# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔໕

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໗

## ຂຸດທະກະນິກາຍ ຂຸດທະກະປາຖະ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໔໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໔ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໘ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໘ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໒໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໔໕

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໗

## ຂຸດທະກະນິກາຍ ຂຸດທະກະປາຖະ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

## ໑. ສະຣະນະຄົມ

### ວ່າດ້ວຍການເຖິງພຣະຣັດຕະນະໄຕຣເປັນສະຣະນະ

ຂ້າພະເຈົ້າ ຂໍເຖິງພຣະ ພຸດທະເຈົ້າ ເປັນສະຣະນະ
ຂ້າພະເຈົ້າ ຂໍເຖິງພຣະ ທຳ ເປັນສະຣະນະ
ຂ້າພະເຈົ້າ ຂໍເຖິງພຣະ ສົງ ເປັນສະຣະນະ
ຂ້າພະເຈົ້າ ຂໍເຖິງພຣະ ພຸດທະເຈົ້າ ເປັນສະຣະນະ ແມ່ນເທື່ອທີ ໒
ຂ້າພະເຈົ້າ ຂໍເຖິງພຣະ ທຳ ເປັນສະຣະນະ ແມ່ນເທື່ອທີ ໒
ຂ້າພະເຈົ້າ ຂໍເຖິງພຣະ ສົງ ເປັນສະຣະນະ ແມ່ນເທື່ອທີ ໒
ຂ້າພະເຈົ້າ ຂໍເຖິງພຣະ ພຸດທະເຈົ້າ ເປັນສະຣະນະ ແມ່ນເທື່ອທີ ໓
ຂ້າພະເຈົ້າ ຂໍເຖິງພຣະ ທຳ ເປັນສະຣະນະ ແມ່ນເທື່ອທີ ໓
ຂ້າພະເຈົ້າ ຂໍເຖິງພຣະ ສົງ ເປັນສະຣະນະ ແມ່ນເທື່ອທີ ໓

**ສະຣະນະຄົມ ຈົບ**

## ໒. ທະສະສິກຂາບົດ

### ວ່າດ້ວຍສິກຂາບົດ ໑໐ ປະການ

໑. ຂ້າພະເຈົ້າຂໍສະມາທານສິກຂາບົດ ຄື ເຈຕະນາງົດເວັ້ນຈາກການຂ້າສັດ

໘. ຂ້າພະເຈົ້າຂໍສະມາທານສິກຂາບົດ ຄື ເຈຕະນາງົດເວັ້ນຈາກການຖືເອົາສິ່ງ ຂອງທີ່ເຈົ້າຂອງບໍ່ໄດ້ໃຫ້

໙. ຂ້າພະເຈົ້າຂໍສະມາທານສິກຂາບົດ ຄື ເຈຕະນາງົດເວັ້ນຈາກພຶດຕິກຳອັນບໍ່ ແມ່ນພົມມະຈັນ[໒]

໔. ຂ້າພະເຈົ້າຂໍສະມາທານສິກຂາບົດ ຄື ເຈຕະນາງົດເວັ້ນຈາກການເວົ້າຕົວະ

໕. ຂ້າພະເຈົ້າຂໍສະມາທານສິກຂາບົດ[໓] ຄື ເຈຕະນາງົດເວັ້ນຈາກການດື່ມນ້ຳເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

໖. ຂ້າພະເຈົ້າຂໍສະມາທານສິກຂາບົດ ຄື ເຈຕະນາງົດເວັ້ນຈາກການບໍຣິໂພກ ອາຫານໃນເວລາວິການ[໑]

໗. ຂ້າພະເຈົ້າຂໍສະມາທານສິກຂາບົດ ຄື ເຈຕະນາງົດເວັ້ນຈາກການຟ້ອນລຳ ຂັບຮ້ອງ ບັນເລງດົນຕີ ແລະເບິ່ງການລະຫຼິ້ນອັນເປັນຂ້າເສິກຕໍ່ກຸສົນ

໘. ຂ້າພະເຈົ້າຂໍສະມາທານສິກຂາບົດ ຄື ເຈຕະນາງົດເວັ້ນຈາກການທັດຊົງປະ ດັບຕົກແຕ່ງຮ່າງກາຍດ້ວຍດອກໄມ້ຂອງຫອມ ແລະເຄື່ອງລູບທາ

໙. ຂ້າພະເຈົ້າຂໍສະມາທານສິກຂາບົດ ຄື ເຈຕະນາງົດເວັ້ນຈາກການນອນເທິງ ບ່ອນນອນສູງແລະບ່ອນນອນໃຫຍ່

໑໐. ຂ້າພະເຈົ້າຂໍສະມາທານສິກຂາບົດ ຄື ເຈຕະນາງົດເວັ້ນຈາກການຮັບຄຳ ແລະເງິນ

**ທະສະສິກຂາບົດ ຈົບ**

## ໙. ທະວັດຕິງສາການ

## ວ່າດ້ວຍອາການ ໓໒

ໃນຮ່າງກາຍນີ້ມີຜົມ ຂົນ ເລັບ ແຂ້ວ ໜັງ
ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ
ຫົວໃຈ ຕັບ ພັງຜືດ ມ້າມ[໒] ປອດ
ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ
ບີ ສະເລດ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ
ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ[໓] ແລະມັນສະໝອງ

**ທະວັດຕິງສາການ ຈົບ**

# ໔. ສາມະເນນປັນຫາ

## ວ່າດ້ວຍການຖາມປັນຫາກັບໂສປາກະສາມະເນນ

໑. ອັນໃດຊື່ວ່າ ໜຶ່ງ
ທີ່ຊື່ວ່າ ໜຶ່ງ ໄດ້ແກ່ ສັດທັງປວງດໍາລົງຢູ່ໄດ້ດ້ວຍອາຫານ

໒. ອັນໃດຊື່ວ່າ ສອງ
ທີ່ຊື່ວ່າ ສອງ ໄດ້ແກ່ ນາມແລະຮູບ

໓. ອັນໃດຊື່ວ່າ ສາມ
ທີ່ຊື່ວ່າ ສາມ ໄດ້ແກ່ ເວທະນາ ໓

໔. ອັນໃດຊື່ວ່າ ສີ່
ທີ່ຊື່ວ່າ ສີ່ ໄດ້ແກ່ ອະຣິຍະສັດ ໔

໕. ອັນໃດຊື່ວ່າ ຫ້າ
ທີ່ຊື່ວ່າ ຫ້າ ໄດ້ແກ່ ອຸປາທານຂັນ ໕

໖. ອັນໃດຊື່ວ່າ ຫົກ
ທີ່ຊື່ວ່າ ຫົກ ໄດ້ແກ່ ອາຍະຕະນະພາຍໃນ ໖

໗. ອັນໃດຊື່ວ່າ ເຈັດ
ທີ່ຊື່ວ່າ ເຈັດ ໄດ້ແກ່ ໂພດຊົງ ໗

໘. ອັນໃດຊື່ວ່າ ແປດ
ທີ່ຊື່ວ່າ ແປດ ໄດ້ແກ່ ອະຣິຍະມັກມີອົງ ໘

໙. ອັນໃດຊື່ວ່າ ເກົ້າ
ທີ່ຊື່ວ່າ ເກົ້າ ໄດ້ແກ່ ສັຕຕາວາສະ ໙

໑໐. ອັນໃດຊື່ວ່າ ສິບ
ທີ່ຊື່ວ່າ ສິບ ໄດ້ແກ່ບຸກຄົນຜູ້ປະກອບດ້ວຍອົງຄຸນ ໑໐໌ ຮຽກວ່າ ພຣະອະຣະຫັນ

**ສາມະເນນປັນຫາ ຈົບ**

# ໕. ມຸງຄຸນສູດ

## ວ່າດ້ວຍມຸງຄຸນ

[໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີເຂດນະຄອນສາວັດຖີ ຄັ້ງນັ້ນ ເມື່ອຣາຕີຜ່ານໄປ[໑] ເທວະດາອົງໜຶ່ງມີວັນນະງົດງາມຫຼາຍ ເປ່ງຣັດສະໝີ ໃຫ້ສະຫວ່າງໄປທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

[໒] ເທວະດາແລະມະນຸດຈຳນວນຫຼາຍ
ຕ່າງມຸ້ງຫວັງຄວາມປອດໄພ ຮ່ວມກັນຄິດເຖິງເລື້ອງມຸງຄຸນ
ຂໍພຣະອົງຕັດບອກມຸງຄຸນອັນສູງສຸດດ້ວຍເທີ້ນ

(ພຣະຜູ້ມີພຣະພາກເຈົ້າຈິ່ງຕັດຕອບດັ່ງນີ້)

[໓] (໑) ການບໍ່ຄົບຄົນພານ (໒) ການຄົບແຕ່ບັນດິດ
(໓) ການບູຊາຄົນທີ່ຄວນບູຊາ ນີ້ເປັນມຸງຄຸນອັນສູງສຸດ

[໔] (໔) ການຢູ່ໃນຖິ່ນທີ່ເໝາະສົມ (໕) ການໄດ້ສ້າງບຸນໄວ້ໃນປາງກ່ອນ
(໖) ການຕັ້ງຕົນໄວ້ຖືກຕ້ອງ ນີ້ເປັນມຸງຄຸນອັນສູງສຸດ

[໕] (໗) ຄວາມເປັນພະຫູສູດ (໘) ຄວາມເປັນຜູ້ມີສິລະປະ
(໙) ວິໄນທີ່ສຶກສາມາດີ (໑໐) ວາຈາສຸພາສິດ
ນີ້ເປັນມຸງຄຸນອັນສູງສຸດ

[໖] (໑໑) ການບຳລຸງມານດາບິດາ (໑໒) ການສົງເຄາະບຸດ
(໑໓) ການສົງເຄາະພັນລະຍາ (໑໔) ການງານທີ່ບໍ່ອາກູນ
ນີ້ເປັນມຸງຄຸນອັນສູງສຸດ

[໗] (໑໕) ການໃຫ້ທານ (໑໖) ການປະພຶດທຳ
(໑໗) ການສົງເຄາະຍາດ (໑໘) ການງານທີ່ບໍ່ມີໂທດ
ນີ້ເປັນມຸງຄຸນອັນສູງສຸດ

[໘] (໑໙) ການງົດເວັ້ນຈາກບາບ (໒໐) ການເວັ້ນຈາກການດື່ມນ້ຳເມົາ
(໒໑) ຄວາມບໍ່ຜະໝາດໃນທຳ
ນີ້ເປັນມຸງຄຸນອັນສູງສຸດ

[໙] (໒໒) ຄວາມເຄົາລົບ (໒໓) ຄວາມຖ່ອມຕົນ

(໒໔) ຄວາມສັນໂດດ

(໒໕) ຄວາມກະຕັນຍູ (໒໖) ການຟັງທຳຕາມການ
ນີ້ເປັນມຸງຄຸນອັນສູງສຸດ

[໑໐] (໒໗) ຄວາມອົດທົນ[๑] (໒໘) ຄວາມເປັນຄົນວ່າງ່າຍ
(໒໙) ການພົບເຫັນສະມະນະ (໓໐) ການສົນທະນາທຳຕາມການ
ເປັນມຸງຄຸນອັນສູງສຸດ

[໑໑] (໓໑) ການເຜົາຜານບາບ (໓໒) ການປະພຶດພົມມະຈັນ[๒]
(໓໓) ການເຫັນອະຣິຍະສັດ (໓໔) ການເຮັດນິບພານໃຫ້ແຈ້ງ
ນີ້ເປັນມຸງຄຸນອັນສູງສຸດ

[໑໒] (໓໕) ຈິດຂອງຜູ້ທີ່ຖືກໂລກກະທຳກະທົບແລ້ວບໍ່ຫວັ່ນໄຫວ
(໓໖) ຈິດບໍ່ເສົ້າໂສກ (໓໗) ຈິດປາສະຈາກທຸລີ (໓໘) ຈິດກະເສມ
ນີ້ເປັນມຸງຄຸນອັນສູງສຸດ

[໑໓] ເທວະດາແລະມະນຸດເຮັດມຸງຄຸນດັ່ງກ່າວມານີ້ແລ້ວ
ບໍ່ປຣາໄຊຂ້າເສິກທັງປວງ ຍ່ອມເຖິງຄວາມປອດໄພໃນທີ່ທຸກສະຖານ
ທັງ ໓໘ ປະການນັ້ນ ເປັນມຸງຄຸນອັນສູງສຸດ
ຂອງເທວະດາແລະມະນຸດເຫຼົ່ານັ້ນ

**ມຸງຄຸນສູດ ຈົບ**

## ໖. ຣະຕະນະສູດ[๑]

## ວ່າດ້ວຍຣະຕະນະອັນປະນີດ

(ພຣະຜູ້ມີພຣະພາກເຈົ້າຕັດຣະຕະນະສູດດັ່ງນີ້)

[໑] ພູດທັງຫຼາຍຜູ້ສິງສະຖິດຢູ່ເທິງພາກພື້ນ[๒]
ຫຼືຜູ້ສິງສະຖິດຢູ່ໃນອາກາດ[๓] ທີ່ມາປະຊຸມກັນຢູ່ບ່ອນນີ້
ຂໍໃຫ້ພູດທັງປວງຈົ່ງເປັນຜູ້ມີໃຈດີ ແລະຈົ່ງຟັງພາສິດໂດຍເຄົາລົບເທີ້ນ

[໒] ຍ້ອນແນວນັ້ນແລ ພູດທັງປວງ ທ່ານຈົ່ງພິຈາຣະນາ
ຈົ່ງແຜ່ເມດຕາຕໍ່ໝູ່ມະນຸດດ້ວຍເທີ້ນ
ມະນຸດເຫຼົ່າໃດນຳເຄື່ອງເຊ່ນສວງມາໃຫ້

ທັງກາງເວັນແລະກາງຄືນ
ຍ້ອນເຫດນັ້ນ ຂໍທ່ານທັງຫຼາຍຢ່າຜະໝາດ
ຈົ່ງຮັກສາມະນຸດເຫຼົ່ານັ້ນ

[໓] ຊັບເຄື່ອງພໍໃຈ ຫຼືຣັດຕະນະຊາດທີ່ປະນີດ໔ໃດ ໆ
ທີ່ມີໃນໂລກນີ້ ໃນໂລກອື່ນ ຫຼື ໃນສະຫວັນ
ຊັບຫຼືຣັດຕະນະຊາດນັ້ນ ໆ ທີ່ສະເໝີດ້ວຍຕະຖາຄົດ ບໍ່ມີ
ນີ້ເປັນຣັດຕະນະອັນປະນີດໃນພຣະພຸດທະເຈົ້າ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໔] ພຣະສາກະຍະມຸນີຜູ້ມີພຣະຫະໄທຕັ້ງໝັ້ນ
ຊົງບັນລຸທຳໃດອັນເປັນທີ່ສິ້ນສຸດກິເລດ
ປາສະຈາກຣາຄະ ເປັນອະມະຕະທຳອັນປະນີດ
ບໍ່ມີທຳໃດ ໆ ທີ່ສະເໝີດ້ວຍທຳນັ້ນ
ນີ້ເປັນຣັດຕະນະອັນປະນີດໃນພຣະທຳ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໕] ພຣະພຸດທະເຈົ້າຜູ້ປະເສີດ
ຕັດສັນເສີນສະມາທິ໑ໃດວ່າເປັນທຳສະອາດ
ຕັດເຖິງສະມາທິໃດວ່າໃຫ້ຜົນໂດຍລຳດັບ
ສະມາທິອື່ນ໌ທີ່ສະເໝີດ້ວຍສະມາທິນັ້ນ ບໍ່ມີ
ນີ້ເປັນຣັດຕະນະອັນປະນີດໃນພຣະທຳ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໖] ບຸກຄົນ ໑໐໘ ຈຳພວກ໌ທີ່ສັດຕະບຸຣຸດສັນເສີນ
ເຊິ່ງຈັດເປັນບຸກຄົນ ໔ ຄູ່ ເປັນສາວົກຂອງພຣະສຸຄົດເຈົ້າ
ເປັນຜູ້ຄວນແກ່ທັກຂິນາ
ທານທີ່ເຂົາຖວາຍໃນບຸກຄົນເຫຼົ່ານັ້ນ ມີຜົນຫຼາຍ
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໗] ບຸກຄົນເຫຼົ່າໃດໃນສາດສະໜາຂອງພຣະໂຄດົມພຸດທະເຈົ້າ
ເປັນຜູ້ປະກອບຕົນໄວ້ດີ ມີໃຈໝັ້ນຄົງ ໝົດຄວາມຫ່ວງໃຍ
ບຸກຄົນເຫຼົ່ານັ້ນຊື່ວ່າບັນລຸອະຣະຫັດຕະຜົນ

ຢັ່ງເຖິງອະມະຕະນິບພານ ຮັບຮົດຄວາມດັບເຢັນແບບໄດ້ເປົ່າ໑
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໘] ສັດຕະບຸຣຸດໃດພິຈາລະນາເຫັນແຈ້ງອະຣິຍະສັດ
ເຮົາຮຽກສັດຕະບຸຣຸດນັ້ນວ່າ ມີອຸປະມາຄືເສົາເຂື່ອນທີ່ຝັງລົງດິນ
ອັນບໍ່ຫວັ່ນໄຫວຍ້ອນລົມທີ່ພັດມາຈາກທິດທັງສີ່
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໙] ພຣະໂສດາບັນເຫຼົ່າໃດຮູ້ແຈ້ງອະຣິຍະສັດ
ທີ່ພຣະສາດສະດາຜູ້ມີປັນຍາເລິກເຊິ່ງສະແດງແລ້ວ
ເຖິງແມ່ນວ່າພຣະໂສດາບັນເຫຼົ່ານັ້ນຈະຜະໝາດໄປແດ່
ທ່ານເຫຼົ່ານັ້ນກໍຈະບໍ່ຖືກຳເນີດໃນພົບທີ່ ໘໒
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໑໐] ພຣະໂສດາບັນນັ້ນລະທຳ ໓ ປະການ ຄື
ສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດ
ພ້ອມກັບການບັນລຸໂສດາປັດຕິມັກໄດ້ແລ້ວ
ແມ່ນຈະມີກິເລດບາງຢ່າງເຫຼືອຢູ່໓

[໑໑] ພຣະໂສດາບັນນັ້ນພົ້ນແລ້ວຈາກອະບາຍທັງສີ່໔
ແລະຈະບໍ່ເຮັດອະພິຖານ ໖໕
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໑໒] ເຖິງແມ່ນວ່າ ພຣະໂສດາບັນນັ້ນຈະເຮັດບາບກຳ໖
ທາງກາຍ ທາງວາຈາ ຫຼື ທາງໃຈໄປແດ່
ທ່ານກໍບໍ່ປົກປິດບາບກຳນັ້ນໄວ້
ເຮົາກ່າວວ່າຜູ້ເຫັນບົດ໗ແລ້ວ ບໍ່ອາດເຮັດແນວນັ້ນໄດ້
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໑໓]    ພຸ່ມໄມ້ງາມໃນປ່າ ເຊິ່ງມີຍອດອອກດອກບານເດຍລະດາດ
ໃນຕົ້ນເດືອນຫ້າແຫ່ງຄິມຫັນລະດູ ງາມຢ່າງຍິ່ງ ສັນໃດ
ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳອັນປະເສີດ
ທີ່ໃຫ້ເຖິງນິບພານ ເພື່ອປະໂຫຍດຢ່າງຍິ່ງ ສັນນັ້ນ
ນີ້ເປັນຣັດຕະນະອັນປະນີດໃນພຣະພຸດທະເຈົ້າ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໑໔]    ພຣະພຸດທະເຈົ້າຜູ້ປະເສີດ ຊົງຮູ້ທຳອັນປະເສີດ
ຊົງປະທານທຳອັນປະເສີດ ຊົງນຳທາງອັນປະເສີດມາໃຫ້
ຊົງເປັນຜູ້ປະເສີດກວ່າໃຜ ໆ ໄດ້ຊົງສະແດງທຳອັນປະເສີດໄວ້
ນີ້ເປັນຣັດຕະນະອັນປະນີດໃນພຣະພຸດທະເຈົ້າ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໑໕]    ພຣະຂີນາສົບເຫຼົ່າໃດສິ້ນພົບເກົ່າແລ້ວ ບໍ່ມີການເກີດໃໝ່
ທັງມີຈິດເບື່ອໜ່າຍໃນພົບທີ່ຈະເກີດຕໍ່ໄປ
ທ່ານເຫຼົ່ານັ້ນຊື່ວ່າ ມີພືດ^ໝົດແລ້ວ ບໍ່ມີສັນທະງອກຂຶ້ນ ເປັນປາດ
ຍ່ອມດັບເຢັນຄືປະທີບດວງນີ້ດັບໄປ
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

(ທ້າວສັກກະຈອມເທບຂາບທູນເປັນຄາຖາ ດັ່ງນີ້)

[໑໖]    ພູດທັງຫຼາຍຜູ້ສິງສະຖິດຢູ່ເທິງພາກພື້ນ
ຫຼື ຜູ້ສິງສະຖິດຢູ່ໃນອາກາດ ທີ່ມາປະຊຸມກັນຢູ່ບ່ອນນີ້
ຂ້າພຣະພຸດທະເຈົ້າທັງຫຼາຍຂໍນອບນ້ອມແດ່ ພຣະຕະຖາຄົດ^ພຸດທະເຈົ້າ
ທີ່ເທວະດາແລະມະນຸດບູຊາແລ້ວ ຂໍໃຫ້ມີຄວາມປອດໄພ

[໑໗]    ພູດທັງຫຼາຍຜູ້ສິງສະຖິດຢູ່ເທິງພາກພື້ນ
ຫຼື ຜູ້ສິງສະຖິດຢູ່ໃນອາກາດ ທີ່ມາປະຊຸມກັນຢູ່ ບ່ອນນີ້
ຂ້າພຣະພຸດທະເຈົ້າທັງຫຼາຍ ຂໍນອບນ້ອມແດ່ພຣະທຳຂອງພຣະຕະຖາຄົດ
ທີ່ເທວະດາແລະມະນຸດບູຊາແລ້ວ ຂໍໃຫ້ມີຄວາມປອດໄພ

[໑໘]    ພູດທັງຫຼາຍຜູ້ສິງສະຖິດຢູ່ເທິງພາກພື້ນ
ຫຼືຜູ້ສິງສະຖິດຢູ່ໃນອາກາດ ທີ່ມາປະຊຸມກັນຢູ່ ບ່ອນນີ້

ຂ້າພຣະພຸດທະເຈົ້າທັງຫຼາຍ ຂໍນອບນ້ອມແດ່ພຣະສົງຂອງພຣະຕະຖາຄົດເຈົ້າ
ທີ່ເທວະດາແລະມະນຸດບູຊາແລ້ວ ຂໍໃຫ້ມີຄວາມປອດໄພ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

ຖ້າເຫັນວ່າຈະໄດ້ສຸກອັນຍິ່ງໃຫຍ່
ດ້ວຍການເສຍສະລະສຸກອັນເລັກໜ້ອຍ
ນັກປາດເພິ່ງເສຍສະລະສຸກອັນເລັກໜ້ອຍ
ເພື່ອເຫັນແກ່ສຸກອັນຍິ່ງໃຫຍ່[໒]

**ຣະຕະນະສູດ ຈົບ**

## ກ. ຕິໂຣກຸດທະສູດ[໑]

## ວ່າດ້ວຍເລື້ອງເຜດທີ່ຢູ່ພາຍນອກຝາເຮືອນ[໒]

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ ເພື່ອອະນຸໂມທະນາພຣະເຈົ້າພິມພິສານຈອມທັບມະຄົດຣັດ ດັ່ງນີ້)

[໑] ພວກເຜດພາກັນມາສູ່ເຮືອນຂອງຕົນ[໓]
ຢືນຢູ່ທີ່ຝາເຮືອນດ້ານນອກກໍມີ
ຢືນຢູ່ທີ່ທາງສີ່ແຍກ ສາມະແຍກກໍມີ
ຢືນອີງຢູ່ທີ່ບານປະຕູກໍມີ

[໒] ເມື່ອມີເຂົ້າແລະນ້ຳດື່ມຫຼວງຫຼາຍ
ເມື່ອຂອງຫຍ້ຳຂອງກິນຖືກຈັດກຽມໄວ້ແລ້ວ
ບໍ່ມີຍາດຈັກຄົນຣະນຶກເຖິງເຜດເຫຼົ່ານັ້ນ
ຍ້ອນກຳຂອງສັດເຫຼົ່ານັ້ນເປັນປັດໄຈ

[໓] ເຫຼົ່າຊົນຜູ້ອະນຸເຄາະ ຍ່ອມຖວາຍອາຫານແລະນ້ຳດື່ມ
ທີ່ສະອາດປະນີດ ເໝາະແກ່ພຣະສົງຕາມການ
ອຸທິດໃຫ້ຍາດທັງຫຼາຍ (ທີ່ເກີດເປັນເຜດ)ແນວນີ້ວ່າ
ຂໍທານນີ້ຈົ່ງສຳເລັດແກ່ຍາດທັງຫຼາຍຂອງເຮົາ
ຂໍຍາດທັງຫຼາຍ ຈົ່ງເປັນສຸກເທີ້ນ

[໔] ສ່ວນຍາດທີ່ເກີດເປັນເຜດເຫຼົ່ານັ້ນ
ພາກັນມາປະຊຸມພ້ອມກັນຢູ່ບ່ອນທີ່ໃຫ້ທານນັ້ນ
ຍ່ອມອະນຸໂມທະນາໃນອາຫານແລະນ້ຳດື່ມຫຼວງຫຼາຍໂດຍເຄົາລົບວ່າ

[໕] ຍ້ອນເຫດແຫ່ງຍາດເຫຼົ່າໃດ ພວກເຮົາຈຶ່ງໄດ້ສຸກສົມບັດແນວນີ້
ຂໍຍາດເຫຼົ່ານັ້ນຂອງພວກເຮົາຈົ່ງມີອາຍຸຍືນ
ອັນໜຶ່ງ ການບູຊາ ຍາດຜູ້ເປັນທາຍົກກໍໄດ້ເຮັດແກ່ພວກເຮົາແລ້ວ
ແລະທາຍົກກໍບໍ່ຂາດຜົນ

[໖] ໃນເຜດວິໄສ°ນັ້ນ ບໍ່ມີກະສິກຳ (ການເຮັດໄຮ່ໄຖນາ)
ບໍ່ມີໂຄຣັກຂະກຳ (ການລ້ຽງງົວໄວ້ຂາຍ)
ບໍ່ມີພານິດຊະກຳ (ການຄ້າຂາຍ) ເຊັ່ນນັ້ນ
ການແລກປ່ຽນຊື້ຂາຍດ້ວຍເງິນ ກໍບໍ່ມີ
ຜູ້ທີ່ຕາຍໄປເກີດເປັນເຜດໃນເຜດວິໄສນັ້ນ
ດຳລົງຊີບດ້ວຍຜົນທານທີ່ພວກຍາດອຸທິດໃຫ້ຈາກມະນຸດສາໂລກນີ້

[໗] ນ້ຳຝົນທີ່ຕົກລົງມາໃນບ່ອນໂນນຍ່ອມໄຫຼໄປສູ່ບ່ອນຫຼຸບ ສັນໃດ
ທານທີ່ທາຍົກອຸທິດໃຫ້ຈາກມະນຸດສາໂລກນີ້
ຍ່ອມສຳເລັດຜົນແນ່ນອນແກ່ພວກເຜດ ຄືກັນສັນນັ້ນ

[໘] ແມ່ນ້ຳທີ່ເຕັມຍ່ອມຍັງສະມຸດສາຄອນໃຫ້ເຕັມປ່ຽມ ສັນໃດ
ທານທີ່ທາຍົກອຸທິດໃຫ້ຈາກມະນຸດສາໂລກນີ້
ຍ່ອມສຳເລັດແກ່ເຜດທັງຫຼາຍ ຄືກັນສັນນັ້ນ

[໙] ກຸນລະບຸດເມື່ອຣະນຶກເຖິງອຸປະກາຣະ
ທີ່ຍາດຜູ້ລະໄປແລ້ວ (ເຜດ)ເຄີຍເຮັດໄວ້ໃນການກ່ອນວ່າ
ຜູ້ນັ້ນໄດ້ໃຫ້ສິ່ງນີ້ແກ່ເຮົາ ໄດ້ເຮັດສິ່ງນີ້ແກ່ເຮົາ
ໄດ້ເປັນຍາດ ມິດ ແລະສະຫາຍຂອງເຮົາ
ກໍຄວນຖວາຍທັກຂິນາທານອຸທິດໃຫ້ແກ່ຍາດຜູ້ລະໄປແລ້ວ

[໑໐] ການຮ້ອງໄຫ້ ຄວາມໂສກເສົ້າ
ຫຼື ຄວາມຮ້ອງໄຫ້ຮ່ຳໄຮແນວອື່ນໃດ
ໃຜ ໆ ບໍ່ຄວນເຮັດເລີຍ ຍ້ອນການຮ້ອງໄຫ້ ເປັນຕົ້ນນັ້ນ
ບໍ່ເປັນປະໂຫຍດແກ່ຍາດຜູ້ລ່ວງລັບໄປແລ້ວ

ຍາດທັງຫຼາຍກໍຍັງຄົງສະພາບຢູ່ແນວນັ້ນ

[໑໑] ສ່ວນທັກຂິນາທານນີ້ແລ ທີ່ຕັ້ງໄວ້ດີແລ້ວໃນພຣະສົງ
ຍ່ອມສຳເລັດປະໂຫຍດເກື້ອກູນສິ້ນການລະນານ
ແກ່ໝູ່ຍາດທີ່ເກີດເປັນເຜດນັ້ນ ໂດຍທັນທີຢ່າງແນ່ນອນ

[໑໘] ຍາດທຳ^ນີ້ນັ້ນ ທ່ານສະແດງອອກແລ້ວ
ການບູຊາຍາດທີ່ຕາຍໄປເປັນເຜດ ທ່ານເຮັດຢ່າງຍິ່ງໃຫຍ່ແລ້ວ
ທັງກຳລັງກາຍຂອງພິກຂຸ ທ່ານກໍເພີ່ມໃຫ້ແລ້ວ
ເປັນອັນວ່າທ່ານສັ່ງສົມບຸນໄວ້ບໍ່ແມ່ນນ້ອຍເລີຍ

**ຕິໂຣກຸດທະສູດ ຈົບ**

## ๘. ນິທິກັນທະສູດ

## ວ່າດ້ວຍການຝັງຂຸມຊັບ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ກຸດຸມພີຄົນໜຶ່ງໃນນະຄອນສາວັດຖີ ດັ່ງນີ້)

[໑] ຄົນເຮົາຝັງຂຸມຊັບ[໑]ໄວ້ໃນບ່ອນເລິກຈົດເຖິງນ້ຳກໍດ້ວຍຄິດວ່າ
ເມື່ອເກີດກິດທີ່ຈຳເປັນຂຶ້ນ ຂຸມຊັບນີ້ຈະເປັນປະໂຫຍດແກ່ເຮົາ

[໒] ຄົນເຮົາຝັງຂຸມຊັບໄວ້ໃນໂລກ ກໍເພື່ອຈຸດປະສົງນີ້ ຄື
ເພື່ອໃຫ້ພົ້ນຈາກຣາຊະໄພທີ່ຖ້າຄຸກຄາມ
ເພື່ອໃຫ້ພົ້ນຈາກໂຈຣະໄພທີ່ຖ້າບຽດບຽນ
ເພື່ອເກັບໄວ້ໃຊ້ໜີ້ກໍມີ ເພື່ອເກັບໄວ້ໃຊ້ໃນຍາມເກີດທຸບພິກຂະໄພ[໒]
ຫຼືເພື່ອໃຊ້ໃນເວລາມີໄພອັນຕະລາຍຕ່າງ ໆ

[໓] ຂຸມຊັບທີ່ເຂົາຝັງໄວ້ຢ່າງດີໃນບ່ອນເລິກຈົດນ້ຳເຖິງພຽງນັ້ນ
ຈະສຳເລັດປະໂຫຍດແກ່ເຂົາໄປທັງໝົດ ຕະຫຼອດເວລາກໍບໍ່ມີ

[໔] ຍ້ອນລາງເທື່ອຂຸມຊັບກໍເຄື່ອນທີ່ໄປກໍມີ
ລາງເທື່ອເຂົາລືມບ່ອນທີ່ຝັງໄວ້ກໍມີ
ລາງເທື່ອພວກນາກເຄື່ອນຍ້າຍກໍມີ
ລາງເທື່ອພວກຍັກນຳຂຸມຊັບນັ້ນໄປກໍມີ

[໔] ຫຼື ລາງເທື່ອເມື່ອເຂົາບໍ່ເຫັນທາຍາດຜູ້ບໍ່ເປັນທີ່ຮັກລັກຂຸດເອົາໄປກໍມີ
ເມື່ອເຂົາສິ້ນບຸນ ຂຸມຊັບທີ່ຝັງໄວ້ທັງໝົດນັ້ນກໍພິນາດຫາຍໄປ

[໕] ຂຸມຊັບ[1]ທີ່ຜູ້ໃດຈະເປັນສະຕີກໍຕາມ ເປັນບຸຣຸດກໍຕາມ
ຝັງໄວ້ດີແລ້ວ ດ້ວຍທານ ສີນ ສັນຍະມະ ແລະທະມະ[2]

[໖] ໃນພຣະເຈດີ ພຣະສົງ ບຸກຄົນ ແຂກທີ່ມາຫາ
ໃນມານດາ ບິດາ ຫຼືອ້າຍ

[໗] ຂຸມຊັບນີ້ຊື່ວ່າຝັງໄວ້ດີແລ້ວ ຄົນອື່ນຂົນເອົາໄປບໍ່ໄດ້
ຈະຕິດຕາມຄົນຝັງຕະຫຼອດໄປ
ບັນດາຊັບສົມບັດທີ່ເຂົາຈະຕ້ອງລະໄປ
ເຂົາພາໄປໄດ້ສະເພາະຂຸມຊັບນີ້ທໍ່ນັ້ນ

[໘] ຂຸມຊັບນີ້ບໍ່ທົ່ວໄປແກ່ຄົນເຫຼົ່າອື່ນ ທັງໂຈນກໍລັກເອົາໄປບໍ່ໄດ້
ຜູ້ມີປັນຍາຄວນເຮັດແຕ່ບຸນທີ່ຈະເປັນຂຸມຊັບຕິດຕາມຕົນຕະຫຼອດໄປ

[໑໐] ຂຸມຊັບນີ້ໃຫ້ຜົນອັນໜ້າປາຖະໜາທຸກປະການ
ແກ່ເທວະດາ ແລະມະນຸດ ຄືເທວະດາແລະມະນຸດປາຖະໜາຜົນໃດ ໆ
ຜົນນັ້ນ ໆ ທຸກຢ່າງ ຈະໄດ້ດ້ວຍຂຸມຊັບນີ້

[໑໑] ຄວາມມີຜິວພັນງົດງາມ ຄວາມມີສຽງມ່ວນ
ຄວາມມີຊວດຊົງສົມສ່ວນ ຄວາມມີຮູບງາມ
ຄວາມເປັນໃຫຍ່ ຄວາມມີບໍລິວານ ທັງໝົດຈະໄດ້ດ້ວຍຂຸມຊັບນີ້

[໑໒] ຄວາມເປັນພຣະຣາຊາໃນປະເທດ ຄວາມເປັນອິດສະຫຼະ[1]
ຄວາມສຸກຂອງຄວາມເປັນພຣະເຈົ້າຈັກກະພັດອັນໜ້າພໍໃຈ
ແລະແມ່ນຄວາມເປັນເທວະຣາຊະຂອງເທວະດາໃນໝູ່ເທບ
ທັງໝົດກໍຈະໄດ້ດ້ວຍຂຸມຊັບນີ້

[໑໓] ສົມບັດຂອງມະນຸດກໍດີ ຄວາມຍິນດີໃນເທວະໂລກກໍດີ
ສົມບັດຄືນິບພານກໍດີ ທັງໝົດຈະໄດ້ດ້ວຍຂຸມຊັບນີ້

[໑໔] ບຸກຄົນອາໄສມິດຕະສໍາປະທາ[2]
ປະກອບຄວາມພຽນໂດຍແຍບຄາຍ

ກໍຈະເປັນຜູ້ຊ່ຽວຊານໃນວິດຊາແລະວິມຸດຕິ
ທັງໝົດຈະໄດ້ດ້ວຍຂຸມຊັບນີ້

[໑໘] ປະຕິສໍາພິທາ[໓] ວິໂມກ[໔] ສາວົກປາຣະມີ[໕]
ປັດເຈກໂພທິ[໖] ແລະພຸດທະພູມ[໗]
ທັງໝົດຈະໄດ້ດ້ວຍຂຸມຊັບນີ້

[໑໙] ບຸນສໍາປະທາ[໑]ນີ້ມີປະໂຫຍດຫຼາຍແນວນີ້
ຍ້ອນແນວນັ້ນ ບັນດິດຜູ້ເປັນປາດ
ຈຶ່ງສັນເສີນພາວະແຫ່ງບຸນທີ່ເຮັດໄວ້ແລ້ວ

**ນິທິກັນທະສູດ ຈົບ**

## ໙. ເມດຕະສູດ

## ວ່າດ້ວຍການແຜ່ເມດຕາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍຜູ້ຢູ່ປ່າ ດັ່ງນີ້)

[໑] ຜູ້ສະຫຼາດໃນປະໂຫຍດມຸ້ງຫວັງບັນລຸສັນຕະບົດ[໒]
ຄວນພໍ່າເພັງວຽກງານ[໓]ຄວນເປັນຜູ້ອາດຫານ ຊື່ກົງ
ເຄັ່ງຄັດ ວ່າງ່າຍ ອ່ອນໂຍນ ແລະບໍ່ຈອງຫອງ

[໒] ຄວນເປັນຜູ້ສັນໂດດ ລ້ຽງງ່າຍ ມີກິດໜ້ອຍ[໔]
ມີຄວາມປະພຶດເບົາ[໕] ມີອິນຊີສະງົບ ມີປັນຍາຮັກສາຕົນ
ບໍ່ຄະນອງ[໖] ບໍ່ຢຶດຕິດໃນຕະກູນທັງຫຼາຍ

[໓] ອັນໜຶ່ງ ບໍ່ຄວນປະພຶດຄວາມເສຍຫາຍໃດ ໆ
ທີ່ຈະເປັນເຫດໃຫ້ວິນຍູຊົນເຫຼົ່າອື່ນຕໍາໜິເອົາໄດ້
(ຄວນແຜ່ເມດຕາໄປໃນສັບພະສັດແນວນີ້ວ່າ)
ຂໍສັດທັງປວງຈົ່ງມີຄວາມສຸກ
ມີຄວາມກະເສມ ມີຕົນເປັນສຸກເທີ້ນ

[໔] ຄື ເຫຼົ່າສັດທີ່ຍັງເປັນຜູ້ຕື່ນຕົກໃຈຫຼືເປັນຜູ້ໝັ້ນຄົງ[໑]
ຂໍສັດເຫຼົ່ານັ້ນທັງໝົດຈົ່ງມີຕົນເປັນສຸກເທີ້ນ

ເຫຼົ່າສັດທີ່ມີຂະໜາດກາຍຍາວ ຂະໜາດກາຍໃຫຍ່ ຂະໜາດກາຍປານກາງ
ຂະໜາດກາຍເຕ້ຍ ຂະໜາດກາຍຈ່ອຍ ຫຼືຂະໜາດກາຍຕຸ້ຍ
ຂໍສັດເຫຼົ່ານັ້ນທັງໝົດຈົ່ງມີຕົນເປັນສຸກເທີ້ນ

[໕] ເຫຼົ່າສັດທີ່ເຄີຍເຫັນກໍດີ ເຫຼົ່າສັດທີ່ບໍ່ເຄີຍເຫັນກໍດີ
ເຫຼົ່າສັດທີ່ຢູ່ໃກ້ແລະຢູ່ໄກກໍດີ ພູດຫຼືສຳພະເວສີ[໒]ກໍດີ
ຂໍສັດເຫຼົ່ານັ້ນທັງໝົດຈົ່ງມີຕົນເປັນສຸກເທີ້ນ

[໖] ບໍ່ຄວນຂົ່ມເຫງ ບໍ່ຄວນດູໝິ່ນກັນແລະກັນໃນທຸກໂອກາດ
ບໍ່ຄວນປາຖະໜາທຸກແກ່ກັນແລະກັນ
ຍ້ອນຄວາມໂກດແລະຄວາມແຄ້ນ

[໗] ຄວນແຜ່ເມດຕາຈິດທີ່ບໍ່ມີປະມານໄປສູ່ສັບພະສັດ
ຄືມານດາເຝົ້າຖະໜອມບຸດຄົນດຽວດ້ວຍຊີວິດ ສັນນັ້ນ

[໘] ອັນໜຶ່ງ ຄວນແຜ່ເມດຕາຈິດທີ່ບໍ່ມີປະມານ
ກວ້າງຂວາງ ບໍ່ມີເວນ ບໍ່ມີສັດຕູໄປສູ່ສັດໂລກທົ່ວທັງໝົດ
ທັງຊັ້ນເທິງ[໑] ຊັ້ນລຸ່ມ[໒] ແລະຊັ້ນກາງ[໓]

[໙] ຜູ້ແຜ່ເມດຕາຈະຢືນ ຍ່າງ ນັ່ງ ຫຼືນອນ
ຄວນຕັ້ງສະຕິ[໔]ນີ້ໄວ້ຕະຫຼອດເວລາທີ່ຍັງບໍ່ງ່ວງ
ນັກປາດຮຽກການຢູ່ດ້ວຍເມດຕານີ້ວ່າ ພົມວິຫານ

[໑໐] ອັນໜຶ່ງ ຜູ້ແຜ່ເມດຕາທີ່ບໍ່ຢຶດຖືທິດຖິ[໕]
ມີສີນ ເຖິງພ້ອມດ້ວຍທັດສະນະ[໖]
ກຳຈັດຄວາມຍິນດີໃນກາມມະຄຸນໄດ້ແລ້ວ
ກໍຈະບໍ່ເກີດໃນທ້ອງອີກຕໍ່ໄປ

**ເມດຕະສູດ ຈົບ**

**ຂຸດທະກະປາຖະ ຈົບ**

# ພຣະສູດຕັນຕະປິດົກ

## ຂຸດທະກະນິກາຍ ທຳມະບົດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

## ໑. ຍະມະກະວັກ

### ໝວດວ່າດ້ວຍທຳເປັນຄູ່ກັນ

## ໑. ຈັກຂຸປາລະເຖຣະວັດຖຸ

### ເລື້ອງພຣະຈັກຂຸບານເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑] ທຳທັງຫຼາຍ[໑] ມີໃຈ[໒]ເປັນຫົວໜ້າ[໓]
ມີໃຈເປັນໃຫຍ່ ສຳເລັດດ້ວຍໃຈ
ຖ້າຄົນມີໃຈຊົ່ວ ກໍຈະເວົ້າຊົ່ວຫຼືເຮັດຊົ່ວໄປນຳ
ຍ້ອນຄວາມຊົ່ວນັ້ນ ທຸກຍ່ອມຕິດຕາມເຂົາໄປ
ຄືໝາກຄົ້ງລໍ້ໝຸນນຳຮອຍຕີນງົວທີ່ແກ່ກວຽນໄປ ສັນນັ້ນ

## ໒. ມັດຖະກຸນທະລີວັດຖຸ

### ເລື້ອງນາຍມັດຖະກຸນທະລີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ອະທິນນະປຸບພະກະພາມບິດາຂອງນາຍມັດຖະກຸນທະລີ ດັ່ງນີ້)

[໒] ທຳທັງຫຼາຍ ມີໃຈເປັນຫົວໜ້າ
ມີໃຈເປັນໃຫຍ່ ສຳເລັດດ້ວຍໃຈ
ຖ້າຄົນມີໃຈດີ ກໍຈະເວົ້າດີຫຼືເຮັດດີໄປນຳ
ຍ້ອນຄວາມດີນັ້ນ ສຸກຍ່ອມຕິດຕາມເຂົາໄປ
ຄືເງົາຕິດຕາມໂຕເຂົາໄປ ສັນນັ້ນ[໑]

# ໓. ຕິດສະເຖຣະວັດຖຸ[໒]

## ເລື້ອງພຣະຕິດສະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓] ຊົນເຫຼົ່າໃດ ເຂົ້າໄປຜູກເວນວ່າ
ຄົນນີ້ໄດ້ດ່າເຮົາ ໄດ້ຂ້າເຮົາ
ໄດ້ຊະນະເຮົາ ແລະໄດ້ລັກສິ່ງຂອງຂອງເຮົາໄປ
ເວນຂອງຊົນເຫຼົ່ານັ້ນ ຍ່ອມບໍ່ສະງົບລະງັບ

[໔] ສ່ວນຊົນເຫຼົ່າໃດ ບໍ່ເຂົ້າໄປຜູກເວນວ່າ
ຄົນນີ້ໄດ້ດ່າເຮົາ ໄດ້ຂ້າເຮົາ
ໄດ້ຊະນະເຮົາ ແລະໄດ້ລັກສິ່ງຂອງຂອງເຮົາໄປ
ເວນຂອງຊົນເຫຼົ່ານັ້ນ ຍ່ອມສະງົບລະງັບ

# ໔. ກາລີຍັກຂີນີວັດຖຸ

## ເລື້ອງນາງຍັກຊື່ກາລີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ນາງຍັກຊື່ກາລີແລະຍິງຄົນໜຶ່ງ ດັ່ງນີ້)

[໕] ຍ້ອນວ່າໃນການໃດ ໆ ເວນທັງຫຼາຍໃນໂລກນີ້
ຍ່ອມບໍ່ສະງົບລະງັບດ້ວຍເວນ[໑]
ແຕ່ເວນທັງຫຼາຍຍ່ອມສະງົບລະງັບດ້ວຍການບໍ່ຈອງເວນ[໒]
ນີ້ເປັນທຳເກົ່າ[໓]

# ໕. ໂກສຳພິກະວັດຖຸ

## ເລື້ອງພິກຂຸຊາວເມືອງໂກສຳພີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຊາວເມືອງໂກສຳພີຜູ້ຜິດຖຽງກັນ ດັ່ງນີ້)

[໖] ຊົນເຫຼົ່າອື່ນ[໔]ບໍ່ຮູ້ແຈ້ງວ່າ ພວກເຮົາກຳລັງຍ່ອຍຍັບຢູ່ ບ່ອນນີ້
ສ່ວນຊົນເຫຼົ່າໃດ[໔]ໃນໝູ່ນັ້ນ ຮູ້ແຈ້ງ

ຄວາມມຸ້ງຮ້າຍກັນຍ່ອມລະງັບ
ຍ້ອນການປະຕິບັດຂອງຊົນເຫຼົ່ານັ້ນ

## ຜ. ມະຫາກາລະເຖຣະວັດຖຸ

### ເລື້ອງພຣະມະຫາການເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໗] ມານ[໑]ຍ່ອມຄອບງຳບຸກຄົນຜູ້ພິຈາລະນາເຫັນຄວາມງາມ[໒]
ບໍ່ສັງລວມອິນຊີ ບໍ່ຮູ້ຈັກປະມານໃນການບໍຣິໂພກ
ຂີ້ຄ້ານ ມີຄວາມພຽນຫຍ່ອນຍານ
ຄືພາຍຸພັດຕົ້ນໄມ້ທີ່ບໍ່ໝັ້ນຄົງໃຫ້ຫັກລົ້ມລົງໄດ້ ສັນນັ້ນ

[໘] ມານຍ່ອມບໍ່ຄອບງຳບຸກຄົນຜູ້ບໍ່ພິຈາລະນາເຫັນຄວາມງາມ
ສັງລວມອິນຊີດີແລ້ວ ຮູ້ຈັກປະມານໃນການບໍຣິໂພກ
ມີສັດທາ ແລະຜາຣົບຄວາມພຽນ
ຄືພາຍຸພັດໂຄ່ນພູສິລາບໍ່ໄດ້ ສັນນັ້ນ

## ກ. ເທວະທັດຕະວັດຖຸ

### ເລື້ອງພຣະເທວະທັດ

(ພຣະຜູ້ມີພຣະພາກເຈົ້າຊົງຜາຣົບພຣະເທວະທັດທີ່ໄດ້ຜ້າກາສາວະມີລາຄາຫຼາຍຈາກແຄວ້ນຄັນທາຣະ ຈຶ່ງຕັດພຣະຄາຖານີ້ແກ່ພິກຂຸຊາວເມືອງຣາດຊະຄຶ ດັ່ງນີ້)

[໙] ຜູ້ໃດຍັງມີກິເລດຄືນ້ຳຝາດ[໓]
ປາສະຈາກທະມະແລະສັດຈະ[໔]
ຈະນຸ່ງຫົ່ມຜ້າກາສາວະ
ຜູ້ນັ້ນບໍ່ຄວນທີ່ຈະນຸ່ງຫົ່ມຜ້າກາສາວະເລີຍ

[໑໐] ສ່ວນຜູ້ໃດຄາຍກິເລດຄືນ້ຳຝາດ
ຕັ້ງໝັ້ນດີແລ້ວໃນສີນ[໑] ປະກອບດ້ວຍທະມະແລະສັດຈະ
ຜູ້ນັ້ນແລຄວນທີ່ຈະນຸ່ງຫົ່ມຜ້າກາສາວະໄດ້[໒]

## ໘. ສັນຊະຍະວັດຖຸ

### ເລື້ອງສັນໄຊປະຣິພາຊົກ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໑] ຊົນເຫຼົ່າໃດເຫັນສິ່ງທີ່ບໍ່ມີສາຣະ[໓]ວ່າມີສາຣະ
ແລະເຫັນສິ່ງທີ່ມີສາຣະ[໔]ວ່າບໍ່ມີສາຣະ
ຊົນເຫຼົ່ານັ້ນ ຊື່ວ່າມີຄວາມດຳຣິຜິດເປັນທາງປະຕິບັດ
ຍ່ອມບໍ່ປະສົບສິ່ງທີ່ມີສາຣະ[໕]

[໑໒] ສ່ວນຊົນເຫຼົ່າໃດທີ່ຮູ້ສິ່ງທີ່ມີສາຣະວ່າມີສາຣະ
ແລະຮູ້ສິ່ງທີ່ບໍ່ມີສາຣະວ່າບໍ່ມີສາຣະ
ຊົນເຫຼົ່ານັ້ນ ຊື່ວ່າມີຄວາມຄິດຖືກເປັນທາງປະຕິບັດ
ຍ່ອມປະສົບສິ່ງທີ່ມີສາຣະ

## ໙. ນັນທະເຖຣະວັດຖຸ

### ເລື້ອງພຣະນັນທະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໓] ຝົນຍ່ອມຮົ່ວຫົດເຮືອນທີ່ມຸງບໍ່ດີໄດ້ ສັນໃດ
ຣາຄະຍ່ອມຮົ່ວຫົດຈິດທີ່ບໍ່ໄດ້ອົບຮົມ[໖]ໄດ້ ສັນນັ້ນ

[໑໔] ຝົນຍ່ອມຮົ່ວຫົດເຮືອນທີ່ມຸງດີແລ້ວບໍ່ໄດ້ ສັນໃດ
ຣາຄະຍ່ອມຮົ່ວຫົດຈິດທີ່ອົບຮົມດີແລ້ວບໍ່ໄດ້ ສັນນັ້ນ[໗]

## ໑໐. ຈຸນທະສູກຣິກະວັດຖຸ

### ເລື້ອງນາຍຈຸນທະຂ້າໝູ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໕] ຜູ້ເຮັດບາບເປັນປົກກະຕິ ຍ່ອມເສົ້າໂສກໃນໂລກນີ້
ຕາຍໄປແລ້ວກໍຍັງເສົ້າໂສກໃນໂລກໜ້າ

ຊື່ວ່າເສົ້າໂສກໃນໂລກທັງສອງ
ເຂົາຍ່ອມເສົ້າໂສກເດືອດຮ້ອນ ຍ້ອນເຫັນກຳທີ່ເສົ້າໝອງຂອງຕົນ

# ໑໑. ທຳມິກະອຸປາສະກະວັດຖຸ

## ເລື້ອງອຸປາສົກຜູ້ປະພຶດທຳ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໖] ຜູ້ເຮັດບຸນໄວ້ ຍ່ອມບັນເທີງໃຈໃນໂລກນີ້
ຕາຍໄປແລ້ວກໍຍັງບັນເທີງໃຈໃນໂລກໜ້າ
ຊື່ວ່າບັນເທີງໃຈໃນໂລກທັງສອງ
ເຂົາຍ່ອມບັນເທີງເບີກບານໃຈຍ້ອນເຫັນກຳທີ່ບໍລິສຸດຂອງຕົນ

# ໑໘. ເທວະທັດຕະວັດຖຸ

## ເລື້ອງພຣະເທວະທັດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໗] ຜູ້ເຮັດບາບເປັນປົກກະຕິ ຍ່ອມເດືອດຮ້ອນໃນໂລກນີ້
ຕາຍໄປແລ້ວກໍຍັງເດືອດຮ້ອນໃນໂລກໜ້າ
ຊື່ວ່າເດືອດຮ້ອນໃນໂລກທັງສອງ
ເຂົາຍ່ອມເດືອດຮ້ອນໃຈວ່າ ເຮົາໄດ້ເຮັດບາບໄວ້ແລ້ວ
ເມື່ອໄປສູ່ທຸກຄະຕິ ເຂົາຍິ່ງເດືອດຮ້ອນຫຼາຍຂຶ້ນ

# ໑໙. ສຸມະນາເທວີວັດຖຸ

## ເລື້ອງນາງສຸມະນາເທວີ

(ພຣະຜູ້ມີພຣະພາກເຈົ້າຊົງຜາຣົບນາງສຸມະນາເທວີທິດາຄົນນ້ອຍຂອງເສດຖີເຊິ່ງເສຍຊີວິດຈຶ່ງ
ຕັດພຣະຄາຖານີ້ແກ່ອະນາຖະບິນດິກະເສດຖີ ດັ່ງນີ້)

[໑໘] ຜູ້ເຮັດບຸນໄວ້ ຍ່ອມເພີດເພີນໃຈໃນໂລກນີ້
ຕາຍໄປແລ້ວກໍຍັງເພີດເພີນໃຈໃນໂລກໜ້າ

ຊື່ວ່າເພີດເພີນໃຈໃນໂລກທັງສອງ
ເຂົາຍ່ອມເພີດເພີນໃຈວ່າ ເຮົາໄດ້ເຮັດບຸນໄວ້ແລ້ວ
ເມື່ອໄປສູ່ສຸກຄະຕິ ເຂົາຍິ່ງເພີດເພີນໃຈຫຼາຍຂຶ້ນ

## ໑໔. ທະເວສະຫາຍະກະພິກຂຸວັດຖຸ

### ເລື້ອງພິກຂຸສອງສະຫາຍ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໙] ຄົນທີ່ກ່າວພຸດທະພົດ[໑] ແມ່ນຫຼາຍ
ແຕ່ມົວຜະໝາດ ບໍ່ເຮັດຕາມພຸດທະພົດນັ້ນ
ຍ່ອມບໍ່ໄດ້ຮັບຜົນແຫ່ງຄວາມເປັນສະມະນະ[໒]
ຄືຄົນຮັບຈ້າງລ້ຽງງົວໄດ້ແຕ່ນັບງົວໃຫ້ຄົນອື່ນ ສັນນັ້ນ

[໒໐] ຄົນທີ່ກ່າວພຸດທະພົດແມ່ນໜ້ອຍ
ແຕ່ປະພຶດທຳສົມຄວນແກ່ທຳເປັນປົກກະຕິ[໓]
ລະຣາຄະ ໂທສະ ແລະໂມຫະໄດ້ແລ້ວ
ຮູ້ຖືກ ມີຈິດລຸດພົ້ນດີແລ້ວ
ບໍ່ຢຶດຕິດໃນໂລກນີ້ແລະໂລກໜ້າ[໔]
ເຂົາຍ່ອມໄດ້ຮັບຜົນແຫ່ງຄວາມເປັນສະມະນະ

**ຍະມະກະວັກທີ ໑ ຈົບ**

# ໒. ອັບປະມາທະວັກ

## ໝວດວ່າດ້ວຍຄວາມບໍ່ຜະໝາດ

## ໑. ສາມາວະຕີວັດຖຸ

### ເລື້ອງພຣະນາງສາມາວະດີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໒໑] ຄວາມບໍ່ຜະໝາດ[໑] ເປັນທາງແຫ່ງອະມະຕະ[໒]

ຄວາມຜະໝາດ ເປັນທາງແຫ່ງຄວາມຕາຍ
ຄົນຜູ້ບໍ່ຜະໝາດຊື່ວ່າຍ່ອມບໍ່ຕາຍ
ຄົນຜູ້ຜະໝາດຄືຄົນຕາຍແລ້ວ[໑]

[໒໒] ບັນດິດຮູ້ຄວາມຕ່າງກັນ
ລະຫວ່າງຄວາມບໍ່ຜະໝາດກັບຄວາມຜະໝາດນັ້ນ
ແລ້ວຕັ້ງຢູ່ໃນຄວາມບໍ່ຜະໝາດ
ຍ່ອມບັນເທີງໃຈໃນຄວາມບໍ່ຜະໝາດ
ຍິນດີໃນທາງປະຕິບັດຂອງພຣະອະຣິຍະທັງຫຼາຍ[໒]

[໒໓] ບັນດິດຜູ້ເປັນນັກປາດເຫຼົ່ານັ້ນ ເພ່ງພິນິດ[໓]
ມີຄວາມພຽນຕໍ່ເນື່ອງ ມີຄວາມບາກບັ່ນໝັ້ນຄົງເປັນປະຈຳ
ຍ່ອມບັນລຸນິບພານອັນເປັນສະພາວະປະເສີດ ປາສະຈາກໂຍຄະ[໔]

# ໘. ກຸມພະໂຄສະກະວັດຖຸ

## ເລື້ອງນາຍກຸມພະໂຄສະກະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະເຈົ້າພິມພິສານແລະນາຍກຸມພະໂຄສະກະ ດັ່ງນີ້)

[໒໔] ຍົດ[໕] ຍ່ອມຈະເລີນແກ່ບຸກຄົນທີ່ມີຄວາມດຸໝັ່ນຂະຫຍັນພຽນ
ມີສະຕິ ມີວຽກງານສະອາດ ພິຈາຣະນາກ່ອນເຮັດ
ສັງລວມ ດຳລົງຊີວິດໂດຍທຳ ແລະບໍ່ຜະໝາດ

# ໙. ຈູລະປັນຖະກະວັດຖຸ

## ເລື້ອງພຣະຈູລະປັນຖະກະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໒໕] ຄົນມີປັນຍາເພິ່ງເຮັດທີ່ເພິ່ງຄືເກາະທີ່ນ້ຳຖວມບໍ່ເຖິງ[໖]
ດ້ວຍຄວາມດຸໝັ່ນ ດ້ວຍຄວາມບໍ່ຜະໝາດ
ດ້ວຍການສັງລວມ ແລະດ້ວຍການເຝິກຝົນ

# ໔. ພາລະນັກຂັດຕະວັດຖຸ

## ເລື້ອງນັກຂະສັດຂອງຄົນພານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໖] ຄົນພານມີປັນຍາຊາມ ປະກອບຄວາມຜະໝາດຢູ່ສະເໝີ
ສ່ວນບັນດິດຜູ້ມີປັນຍາ ຮັກສາຄວາມບໍ່ຜະໝາດໄວ້
ຄືຄົນຮັກສາຊັບອັນປະເສີດ ສັນນັ້ນ

[໔໗] ທ່ານທັງຫຼາຍ ຢ່າປະກອບຄວາມຜະໝາດ
ຢ່າປະກອບຄວາມເຊີຍຊົມຍິນດີໃນກາມເລີຍ
ຍ້ອນຜູ້ບໍ່ຜະໝາດແລ້ວ ເພ່ງພິນິດຢູ່
ຍ່ອມໄດ້ຮັບຄວາມສຸກອັນເຕັມປ່ຽມ[໑]

# ໕. ມະຫາກັດສະປະເຖຣະວັດຖຸ

## ເລື້ອງພຣະມະຫາກັດສະປະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖາ ດັ່ງນີ້)

[໔໘] ເມື່ອໃດ ບັນດິດບັນເທົາຄວາມຜະໝາດ ດ້ວຍຄວາມບໍ່ຜະໝາດ
ຂຶ້ນສູ່ປັນຍາຄືຜາສາດ[໒] ບໍ່ເສົ້າໂສກ
ພິຈາລະນາເຫັນໝູ່ສັດຜູ້ມີຄວາມເສົ້າໂສກ
ເມື່ອນັ້ນ ບັນດິດຜູ້ເປັນນັກປາດ ຍ່ອມເຫັນຄົນພານໄດ້
ຄືຄົນທີ່ຢືນຢູ່ເທິງພູເຫັນຄົນທີ່ພາກພື້ນໄດ້ ສັນນັ້ນ

# ໖. ເທວະສະຫາຍະກະພິກຂຸວັດຖຸ

## ເລື້ອງພິກຂຸສອງສະຫາຍ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸ ໒ ຮູບ ດັ່ງນີ້)

[໔໙] ຜູ້ມີປັນຍາດີ[໓] ເປັນຜູ້ບໍ່ຜະໝາດ ໃນເມື່ອຜູ້ອື່ນຜະໝາດ
ເປັນຜູ້ຕື່ນຢູ່ສ່ວນຫຼາຍ[໔] ໃນເມື່ອຜູ້ອື່ນຫຼັບ

ຍ່ອມລະຖິ້ມຄົນມີປັນຍາຊາມໄປໄກ
ຄືມ້າທີ່ແລ່ນໄດ້ໄວ ລະຖິ້ມມ້າທີ່ໝົດແຮງໄວ້ ສັນນັ້ນ

# ໆ. ມະຄະວັດຖຸ

## ເລື້ອງທ້າວມະຄະວານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ເຈົ້າລິດສະຫວີນາມວ່າ ມະຫາລີ ດັ່ງນີ້)

[໓໐] ທ້າວມະຄະວານປະເສີດສຸດໃນໝູ່ເທວະດາຍ້ອນຄວາມບໍ່ຜະໝາດ
ບັນດິດທັງຫຼາຍ ສັນເສີນຄວາມບໍ່ຜະໝາດ
ແລະຕິຕຽນຄວາມຜະໝາດທຸກເມື່ອ

# ໗. ອັນຍະຕະຣະພິກຂຸວັດຖຸ

## ເລື້ອງພິກຂຸອົງໃດອົງໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸອົງໜຶ່ງ ດັ່ງນີ້)

[໓໑] ພິກຂຸຍິນດີໃນຄວາມບໍ່ຜະໝາດ
ຫຼື ເຫັນໄພໃນຄວາມຜະໝາດ
ເຜົາສັງໂຍດ໌ນ້ອຍໃຫຍ່ໄດ້ໝົດ
ຄືໄຟເຜົາເຊື້ອນ້ອຍໃຫຍ່ໃຫ້ໝົດໄປ ສັນນັ້ນ

# ໘. ນິຄົມວາສີຕິດສະເຖຣະວັດຖຸ

## ເລື້ອງພຣະຕິດສະເຖຣະຜູ້ຢູ່ໃນນິຄົມ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະຕິດສະເຖຣະຜູ້ຢູ່ໃນນິຄົມ ດັ່ງນີ້)

[໓໔] ພິກຂຸຍິນດີໃນຄວາມບໍ່ຜະໝາດ
ຫຼື ມີປົກກະຕິເຫັນໄພໃນຄວາມຜະໝາດ
ເປັນຜູ້ບໍ່ເສື່ອມ໌ ຊື່ວ່າຢູ່ໃກ້ນິບພານແນ່ແທ້

**ອັບປະມາທະວັກທີ ໔ ຈົບ**

# ໓. ຈິດຕະວັກ

## ໝວດວ່າດ້ວຍການເຝິກຈິດ

## ໑. ເມຄິຍະເຖຣະວັດຖຸ

### ເລື້ອງພຣະເມຄິຍະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະເມຄິຍະເຖຣະ ດັ່ງນີ້)

[໓໓] ຈິດທີ່ດີ້ນຮົນ ກວັດແກວ່ງ ຮັກສາຍາກ ຫ້າມຍາກ[໑]
ຜູ້ມີປັນຍາສາມາດຄວບຄຸມໃຫ້ຊື່ໄດ້
ຄືຊ່າງສິນດັດລູກສອນໃຫ້ກົງ ສັນນັ້ນ

[໓໔] ຈິດນີ້ຍ່ອມດີ້ນຮົນໄປມາ[໒]
ຄືປາທີ່ຖືກຍົກຂຶ້ນຈາກນ້ຳໂຍນໄປເທິງບົກ ສັນນັ້ນ
ດັ່ງນັ້ນ ຜູ້ມີປັນຍາຈຶ່ງຄວນລະບ້ວງແຫ່ງມານ[໓]

## ໒. ອັນຍະຕະຣະພິກຂຸວັດຖຸ

### ເລື້ອງພິກຂຸອົງໃດອົງໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸອົງໜຶ່ງ ດັ່ງນີ້)

[໓໕] ການເຝິກ[໑]ຈິດທີ່ຄວບຄຸມໄດ້ຍາກ ປ່ຽນແປງງ່າຍ[໒]
ມັກໃຝ່ຫາແຕ່ອາລົມທີ່ປາຖະໜາ ຈັດວ່າເປັນຄວາມດີ
ຍ້ອນຈິດທີ່ເຝິກແລ້ວຍ່ອມນຳສຸກມາໃຫ້[໓]

## ໓. ອຸກກັນຖິຕະພິກຂຸວັດຖຸ

### ເລື້ອງພິກຂຸຜູ້ກະສັນຈະສິກ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸອົງໜຶ່ງຜູ້ກະສັນຈະສິກ ດັ່ງນີ້)

[໓໖] ຜູ້ມີປັນຍາຄວນຮັກສາຈິດ

ທີ່ເຫັນໄດ້ຍາກຍິ່ງ ລະອຽດຍິ່ງ
ມັກໃຝ່ຫາແຕ່ອາລົມທີ່ປາຖະໜາ
ຍ້ອນຈິດທີ່ຄຸ້ມຄອງແລ້ວຍ່ອມນຳສຸກມາໃຫ້

## ໔. ສັງຄະຣັກຂິຕະເຖຣະວັດຖຸ

### ເລື້ອງພຣະສັງຄະຣັກຂິຕະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະສັງຄະຣັກຂິຕະເຖຣະ ດັ່ງນີ້)

[໓໗] ຄົນເຫຼົ່າໃດສັງລວມຈິດ
ທີ່ທ່ຽວໄປໄກ[໑] ທ່ຽວໄປດວງດຽວ[໒]
ບໍ່ມີຮູບຮ່າງ[໓] ອາໄສຢູ່ໃນຖ້ຳ[໔]
ຄົນເຫຼົ່ານັ້ນຈັກພົ້ນຈາກເຄື່ອງຜູກມັດແຫ່ງມານ[໕]

## ໕. ຈິດຕະຫັດຖະເຖຣະວັດຖຸ

### ເລື້ອງພຣະຈິດຕະຫັດຖະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໘] ຜູ້ມີຈິດບໍ່ໝັ້ນຄົງ ບໍ່ຮູ້ແຈ້ງສັດທຳ
ມີຄວາມເຫຼື້ອມໃສເລື່ອນລອຍ
ຍ່ອມບໍ່ມີປັນຍາສົມບູນ

[໓໙] ຜູ້ມີຈິດບໍ່ຊຸ່ມດ້ວຍຣາຄະ ບໍ່ຊຸ່ນມົວດ້ວຍໂທສະ
ລະບຸນແລະບາບໄດ້ແລ້ວ ມີສະຕິຕື່ນຢູ່
ຍ່ອມບໍ່ມີໄພ[໖]

## ໖. ປັນຈະສະຕະພິກຂຸວັດຖຸ

### ເລື້ອງພິກຂຸ ໕໐໐ ອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸ ໕໐໐ ອົງ ດັ່ງນີ້)

[໔໐] ພິກຂຸຮູ້ວ່າ ຮ່າງກາຍນີ້ປຽບຄືໝໍ້ດິນ

ຄວນປ້ອງກັນຈິດນີ້ ຄືປ້ອງກັນພຣະນະຄອນ
ແລ້ວໃຊ້ອາວຸດຄືປັນຍາຮົບກັບມານ[๑]
ແລະຄວນຮັກສາໄຊຊະນະໄວ້ ແຕ່ບໍ່ຄວນຍິນດີຢຶດຕິດ[๒]

## ໗. ປູຕິຄັດຕະຕິດສະເຖຣະວັດຖຸ

### ເລື້ອງພຣະຕິດສະເຖຣະຜູ້ມີຮ່າງກາຍເນົ່າເປື່ອຍ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະຕິດສະເຖຣະຜູ້ມີຮ່າງກາຍເນົ່າເປື່ອຍ ດັ່ງນີ້)

[໔໑] ອີກບໍ່ດົນປານໃດ ຮ່າງກາຍນີ້ກໍຈັກປາສະຈາກວິນຍານ
ຖືກປະຖິ້ມທັບຖົມແຜ່ນດິນ
ຄືຂອນໄມ້ທີ່ຂາດປະໂຫຍດ ສັນນັ້ນ

## ໘. ນັນທະໂຄປາລະກະວັດຖຸ

### ເລື້ອງນາຍນັນທະຜູ້ລ້ຽງງົວ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໒] ຈິດທີ່ຕັ້ງໄວ້ຜິດ[๑]ເພິ່ງເຮັດໃຫ້ໄດ້ຮັບຄວາມເສຍຫາຍ
ຍິ່ງກວ່າຄວາມເສຍຫາຍທີ່ໂຈນເຫັນໂຈນ[๒]
ຫຼືຜູ້ຈອງເວນເຫັນຜູ້ຈອງເວນ ຈະເພິ່ງເຮັດໃຫ້ແກ່ກັນ

## ໙. ໂສເຣີຍຍະວັດຖຸ

### ເລື້ອງພຣະໂສເຣີຍຍະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໓] ຈິດທີ່ຕັ້ງໄວ້ຖືກຕ້ອງ[๓] ຍ່ອມອຳນວຍໃຫ້ໄດ້ຜົນທີ່ປະເສີດຍິ່ງ
ທີ່ມານດາບິດາກໍເຮັດໃຫ້ບໍ່ໄດ້
ຫຼືແມ່ນຍາດເຫຼົ່າອື່ນກໍໃຫ້ບໍ່ໄດ້

**ຈິດຕະວັກທີ ໓ ຈົບ**

# ໔. ປຸບຜະວັກ
# ໝວດວ່າດ້ວຍດອກໄມ້

## ໑. ປັນຈະສະຕະພິກຂຸວັດຖຸ
## ເລື້ອງພິກຂຸ ໕໐໐ ອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸ ໕໐໐ ອົງ ດັ່ງນີ້)

[໔໔] ໃຜຈັກຮູ້ແຈ້ງແຜ່ນດິນນີ້[໑] ຍົມມະໂລກ[໒]
ແລະມະນຸດສາໂລກນີ້ ພ້ອມທັງເທວະໂລກ
ໃຜຈັກເລືອກບົດທຳ[໓]ທີ່ຕະຖາຄົດສະແດງໄວ້ດີແລ້ວ
ຄືຊ່າງດອກໄມ້ຜູ້ຊານສະຫຼາດເລືອກເກັບດອກໄມ້ ສັນນັ້ນ

[໔໕] ພຣະເສຂະ[໔]ຈັກຮູ້ແຈ້ງແຜ່ນດິນນີ້ ຍົມມະໂລກ
ແລະມະນຸດສາໂລກນີ້ ພ້ອມທັງເທວະໂລກ
ພຣະເສຂະຈັກເລືອກບົດທຳທີ່ຕະຖາຄົດສະແດງໄວ້ດີແລ້ວ
ຄືຊ່າງດອກໄມ້ຜູ້ຊານສະຫຼາດເລືອກເກັບດອກໄມ້ ສັນນັ້ນ

## ໒. ມະຣີຈິກຳມັດຖານິກະພິກຂຸວັດຖຸ

## ເລື້ອງພິກຂຸຜູ້ຈະເລີນມະຣີຈິກຳມັດຖານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ຈະເລີນກຳມັດຖານມີພະຍັບແດດເປັນ
ອາລົມ ດັ່ງນີ້)

[໔໖] ພິກຂຸຜູ້ຮູ້ແຈ້ງວ່າ ຮ່າງກາຍນີ້ປຽບຄືຟອງນ້ຳ
ຮູ້ແຈ້ງວ່າ ຮ່າງກາຍນີ້ມີລັກສະນະຄືພະຍັບແດດ[໑]
ຕັດພວງດອກໄມ້ຂອງມານ[໒]ໄດ້ແລ້ວ
ກໍຈະໄປເຖິງສະຖານທີ່ທີ່ມັດຈຸຣາດຫາບໍ່ພົ້[໓]

## ໓. ວິທູທະພະວັດຖຸ
## ເລື້ອງເຈົ້າຊາຍວິທູທະພະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໖] ຄວາມຕາຍ[໕] ຍ່ອມດຶງລາກນໍຣະຊົນຜູ້ມີໃຈຕິດຂ້ອງຢູ່ໃນອາລົມຕ່າງ ໆ
ຜູ້ມົວແຕ່ເລືອກເກັບດອກໄມ້[໕]ຢູ່
ຄືແມ່ນ້ຳໃຫຍ່ພັດພາເອົາຊາວບ້ານທີ່ຫຼັບໄຫຼໄປ ສັນນັ້ນ

## ໔. ປະຕິປູຊິກາວັດຖຸ

### ເລື້ອງນາງປະຕິປູຊິກາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໗] ຄວາມຕາຍຍ່ອມເຮັດຄົນທີ່ມີໃຈຕິດຂ້ອງຢູ່ໃນອາລົມຕ່າງ ໆ
ຜູ້ມົວແຕ່ເລືອກເກັບດອກໄມ້ຢູ່
ຜູ້ບໍ່ອີ່ມໃນກາມທັງຫຼາຍ[໑] ໃຫ້ຕົກຢູ່ໃນອຳນາດ

## ໕. ມັດສະຣິໂກສິຍະເສດຖີວັດຖຸ

### ເລື້ອງໂກສິຍະເສດຖີຜູ້ຂີ້ຖີ່

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໘] ພະມອນບໍ່ທຳລາຍດອກ ສີ ແລະກິ່ນ
ດູດແຕ່ນ້ຳຫວານໄປ ສັນໃດ
ມຸນີເພິ່ງທ່ຽວໄປໃນໝູ່ບ້ານ ສັນນັ້ນ[໒]

## ໖. ປາຕິກາຊີວົກວັດຖຸ

### ເລື້ອງອາຊີວົກຊື່ປາຕິກະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ ແກ່ອຸປາສິກາຜູ້ຮັບໃຊ້ອາຊີວົກຊື່ປາຕິກະ ດັ່ງນີ້)

[໕໐] ບຸກຄົນບໍ່ເພິ່ງໃສ່ໃຈຄຳເວົ້າສະແຫຼງຫູຂອງຄົນອື່ນ
ບໍ່ເພິ່ງເພ່ງເລັງກິດທີ່ຄົນອື່ນເຮັດແລ້ວ ຫຼື ຍັງບໍ່ໄດ້ເຮັດ
ແຕ່ເພິ່ງກວດເບິ່ງກິດທີ່ຕົນເຮັດແລ້ວ ແລະ ຍັງບໍ່ໄດ້ເຮັດທໍ່ນັ້ນ

# ໗. ສັດຕະປານິອຸປາສະກະວັດຖຸ

## ເລື້ອງສັດຕະປານິອຸປາສິກາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະອານົນເຖຣະ ດັ່ງນີ້)

[໕໑] ວາຈາສຸພາສິດ[໑] ຍ່ອມບໍ່ມີຜົນແກ່ຜູ້ບໍ່ເຮັດຕາມ[໒]
ຄືດອກໄມ້ງາມ ມີສີສວຍ (ແຕ່) ບໍ່ມີກິ່ນຫອມ

[໕໒] ວາຈາສຸພາສິດ ຍ່ອມມີຜົນແກ່ຜູ້ເຮັດຕາມດ້ວຍດີ
ຄືດອກໄມ້ງາມ ມີທັງສີແລະມີກິ່ນຫອມ ສັນນັ້ນ[໓]

# ໘. ວິສາຂາວັດຖຸ

## ເລື້ອງນາງວິສາຂາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໕໓] ສັດຜູ້ມີອັນຈະຕ້ອງຕາຍ ເມື່ອເກີດມາແລ້ວ ຄວນສ້າງກຸສົນໄວ້ໃຫ້ຫຼາຍ
ຄື ຊ່າງດອກໄມ້ຮ້ອຍພວງມາໄລໄວ້ເປັນຈຳນວນຫຼາຍຈາກກອງດອກໄມ້ ສັນນັ້ນ

# ໙. ອານັນທະເຖຣະວັດຖຸ

## ເລື້ອງພຣະອານົນເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະອານົນເຖຣະ ດັ່ງນີ້)

[໕໔] ກິ່ນດອກໄມ້ລອຍໄປທວນລົມບໍ່ໄດ້
ກິ່ນຈັນ ກິ່ນເກດສະໜາ
ຫຼືກິ່ນກະລຳພັກກໍລອຍໄປທວນລົມບໍ່ໄດ້
ສ່ວນກິ່ນຂອງສັດຕະບຸຣຸດ ລອຍໄປທວນລົມໄດ້
ຍ້ອນສັດຕະບຸຣຸດຂ່າລືໄປທົ່ວທຸກທິດ[໑]

[໕໕] ກິ່ນສິນປະເສີດກວ່າກິ່ນຫອມເຫຼົ່ານີ້ ຄື
ກິ່ນຈັນ ກິ່ນເກດສະໜາ ກິ່ນດອກບົວ ແລະກິ່ນດອກມະລິ

# ໑໐. ມະຫາກັດສະປະເຖຣະວັດຖຸ

## ເລື້ອງພຣະມະຫາກັດສະປະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໕໖] ກິ່ນເກດສະໜາ ຫຼື ກິ່ນຈັນນີ້ ຫອມພຽງເລັກໜ້ອຍ
ແຕ່ກິ່ນຂອງທ່ານຜູ້ມີສີນ ຫອມຫຼາຍທີ່ສຸດ
ຫອມຟຸ້ງໄປທົ່ວທັງເທວະໂລກແລະມະນຸດສາໂລກ

# ໑໑. ໂຄທິກະເຖຣະວັດຖຸ

## ເລື້ອງພຣະໂຄທິກະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໕໗] ມານຍ່ອມບໍ່ພົ້ທາງຂອງທ່ານຜູ້ມີສີນສົມບູນ
ຜູ້ຢູ່ດ້ວຍຄວາມບໍ່ຜະໝາດເປັນປົກກະຕິ
ຜູ້ລຸດພົ້ນແລ້ວຍ້ອນຮູ້ຖືກ

# ໑໘. ຄະຫະທິນນະວັດຖຸ

## ເລື້ອງນາຍຄະຣະຫະທິນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ນາຍຄະຣະຫະທິນ ແລະນາຍສິຣິຄຸດ ດັ່ງນີ້)

[໕໘] ໃນກອງຂີ້ເຫຍື້ອທີ່ເຂົາຖິ້ມໄວ້ຂ້າງທາງໃຫຍ່
ຍັງມີດອກບົວມີກິ່ນຫອມອອນຊອນໃຈເກີດຂຶ້ນມາໄດ້ ສັນໃດ

[໕໙] ໃນໝູ່ປຸຖຸຊົນຜູ້ມືດມົນເຊິ່ງປຽບໄດ້ກັບກອງຂີ້ເຫຍື້ອ
ກໍຍັງມີສາວົກຂອງພຣະສຳມາສຳພຸດທະເຈົ້າຈະເລີນຮຸ່ງເຮືອງຢູ່ດ້ວຍປັນຍາ ສັນນັ້ນ

**ປຸບຜະວັກທີ ໔ ຈົບ**

# ໕. ພາລະວັກ

## ໝວດວ່າດ້ວຍຄົນພານ໑

## ໑. ອັນຍະຕະຣະປຸຣິສະວັດຖຸ

### ເລື້ອງຊາຍຄົນໃດຄົນໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະເຈົ້າປະເສນທິໂກສົນ ແລະຊາຍຄົນໜຶ່ງດັ່ງນີ້)

[໖໐] ຣາຕີໜຶ່ງ ຍາວນານສຳລັບຄົນຜູ້ຕື່ນຢູ່
ລະຍະທາງໂຍດໜຶ່ງ ຍາວໄກສຳລັບຄົນຜູ້ອ່ອນແຮງ
ສັງສາຣະວັດ໒ຍາວນານສຳລັບຄົນພານຜູ້ບໍ່ຮູ້ແຈ້ງສັດທຳ

## ໒. ມະຫາກັດສະປະສັດທິວິຫາຣິກະວັດຖຸ

### ເລື້ອງສັດທິວິຫາຣິກຂອງພຣະມະຫາກັດສະປະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ຢູ່ໃນນະຄອນຣາດຊະຄື ດັ່ງນີ້)

[໖໑] ຫາກບຸກຄົນທ່ຽວຫາຄົນດີກວ່າຕົນ ຫຼື ສະເໝີກັບຕົນບໍ່ໄດ້
ກໍຄວນຖືການທ່ຽວໄປຄົນດຽວໃຫ້ໝັ້ນຄົງ
ຍ້ອນຈະຫາຄວາມເປັນເພື່ອນ໑ໃນຄົນພານບໍ່ໄດ້ເລີຍ

## ໓. ອານັນທະເສດຖີວັດຖຸ

### ເລື້ອງອານັນທະເສດຖີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ເສດຖີຊື່ມູນສີຣິບຸດຂອງອານັນທະເສດຖີ ດັ່ງນີ້)

[໖໒] ຄົນພານຍ່ອມເດືອດຮ້ອນວ່າ ເຮົາມີບຸດ ເຮົາມີຊັບ
ແທ້ຈິງ ໂຕຕົນກໍບໍ່ມີ ແລ້ວບຸດແລະຊັບຈັກມີມາແຕ່ໃສໄດ້

## ໔. ຄັນຖິເພທະກະໂຈຣະວັດຖຸ

### ເລື້ອງໂຈນຜູ້ແກ້ຂອດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ໂຈນຜູ້ແກ້ຂອດແລະຊົນທັງຫຼາຍ ດັ່ງນີ້)

[๖๖]	ຄົນພານທີ່ຮູ້ໂຕວ່າເປັນຄົນພານ
ຍັງເປັນບັນດິດໄດ້ແດ່
ແຕ່ຄົນພານທີ່ສຳຄັນຕົນວ່າເປັນບັນດິດ
ນັ້ນແລ ຮຽກວ່າ ຄົນພານແທ້

## ໕. ອຸທາຍິເຖຣະວັດຖຸ
## ເລື້ອງພຣະອຸທາຍິເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໖໔] ຄົນພານ ແມ່ນຈະຢູ່ໃກ້ບັນດິດຊົ່ວຊີວິດ
ກໍບໍ່ຮູ້ແຈ້ງທຳ ຄືຈອງບໍ່ຮູ້ຣົດແກງ ສັນນັ້ນ

## ໖. ປາເຖີຍຍະກະພິກຂຸວັດຖຸ

## ເລື້ອງພິກຂຸຊາວເມືອງປາຖາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໖໕] ວິນຍູຊົນ ແມ່ນຈະຢູ່ໃກ້ບັນດິດພຽງບຶດໜຶ່ງ
ກໍຮູ້ແຈ້ງທຳໄດ້ທັນທີ ຄືລີ້ນຮູ້ຣົດແກງ ສັນນັ້ນ

## ໗. ສຸບປະພຸດທະກຸດຖິວັດຖຸ

## ເລື້ອງນາຍສຸບປະພຸດທະຜູ້ເປັນໂຣກເຮື້ອນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໖໖] ຄົນພານຜູ້ມີປັນຍາຊາມ ເຮັດຕົນໃຫ້ເປັນຄືຂ້າເສິກ
ທ່ຽວເຮັດບາບກຳທີ່ໃຫ້ຜົນເຜັດຮ້ອນ

## ໘. ກັດສະກະວັດຖຸ

## ເລື້ອງຊາວນາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ຊາວນາຄົນໜຶ່ງ ດັ່ງນີ້)

[๕๗] ບຸກຄົນເຮັດກຳໃດແລ້ວ
ຍ່ອມເດືອດຮ້ອນໃຈໃນພາຍຫຼັງ
ຮ້ອງໄຫ້ນ້ຳຕານອງໜ້າ ສະເຫວີຍຜົນກຳຢູ່
ກຳນັ້ນຊື່ວ່າ ເປັນກຳບໍ່ດີ

## ໙. ສຸມະນະມາລາການວັດຖຸ

## ເລື້ອງຊ່າງດອກໄມ້ຊື່ສຸມົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໖໘] ບຸກຄົນເຮັດກຳໃດແລ້ວ
ຍ່ອມບໍ່ເດືອດຮ້ອນໃຈໃນພາຍຫຼັງ
ອີ່ມເອີບ ດີໃຈ ສະເຫວີຍຜົນກຳຢູ່
ກຳນັ້ນຊື່ວ່າ ເປັນກຳດີ

## ໑໐. ອຸບປະລະວັນນາເຖຣີວັດຖຸ

## ເລື້ອງພຣະອຸບົນວັນນາເຖຣີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໖໙] ຕະຫຼອດເວລາທີ່ບາບຍັງບໍ່ໃຫ້ຜົນ
ຄົນພານຍ່ອມສຳຄັນບາບຄືນ້ຳເຜີ້ງ[๑]
ແຕ່ເມື່ອໃດບາບໃຫ້ຜົນ ເມື່ອນັ້ນຄົນພານຍ່ອມປະສົບທຸກ

## ໑໑. ຊຳພຸກາຊີວະກະວັດຖຸ

## ເລື້ອງອາຊີວົກຊື່ຊຳພຸກະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ມະຫາຊົນຊາວແຄວ້ນອັງຄະແລະມະຄົດ ດັ່ງນີ້)

[໗໐] ຄົນພານເຖິງໃຊ້ປາຍຫຍ້າຄາແຈະອາຫານກິນທຸກໆ ເດືອນ
ເຂົາກໍບໍ່ໄດ້ຮັບຜົນແຫ່ງການປະຕິບັດເຊັ່ນນັ້ນ
ທີ່ສູ້ງວທີ ໑໖ ຂອງຜູ້ມີທຳອັນນັບໄດ້ແລ້ວ[๑]

# ໑໘. ອະຫິເປຕະວັດຖຸ

## ເລື້ອງເຜດຜູ້ມີຮູບຮ່າງຄືງູ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໗໑] ບາບກຳທີ່ບຸກຄົນເຮັດແລ້ວຍັງບໍ່ໃຫ້ຜົນທັນທີ
ຄືນ້ຳນົມທີ່ຮີດໃນມື້ນີ້
ບາບກຳນັ້ນຈະຄ່ອຍ ໆ ເຜົາຜານຄົນພານ
ຄືໄຟທີ່ຖືກເຖົ່າປົກໄວ້ ສັນນັ້ນ

# ໑໙. ສັດຖິກູຕະເປຕະວັດຖຸ

## ເລື້ອງເຜດຖືກຄ້ອນຕີຫົວ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໗໒] ຄວາມຮູ້ເກີດແກ່ຄົນພານພຽງເພື່ອທຳລາຍຢ່າງດຽວ
ຄວາມຮູ້ຂອງຄົນພານນັ້ນ ກຳຈັດຄຸນງາມຄວາມດີ
ເຮັດປັນຍາຂອງເຂົາໃຫ້ຕົກຕ່ຳ

# ໑໔. ສຸທຳມະເຖຣະວັດຖຸ

## ເລື້ອງພຣະສຸທຳມະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະສຸທຳມະເຖຣະ ດັ່ງນີ້)

[໗໓] ພິກຂຸພານປາຖະໜາການຍ້ອງຍໍທີ່ຕົນບໍ່ມີ
ປາຖະໜາໃຫ້ພິກຂຸທັງຫຼາຍ ຕາມຮ້ອມລ້ອມຕົນ
ປາຖະໜາຄວາມເປັນໃຫຍ່ໃນອາວາດ
ແລະປາຖະໜາເຄື່ອງບູຊາຈາກຊາວບ້ານທັງຫຼາຍ

[໗໔] ພິກຂຸພານເກີດຄວາມດຳຣິວ່າ
ຂໍໃຫ້ຄະລືຫັດແລະບັນພະຊິດທັງ ໔ ຝ່າຍ ຈົ່ງເຂົ້າໃຈວ່າ
ເຮົາຜູ້ດຽວເຮັດກິດນີ້ ເຮົາຜູ້ດຽວເພິ່ງມີອຳນາດໃນວຽກງານ

ບໍ່ວ່າກິດຈະການໃຫຍ່ຫຼືນ້ອຍ
ຄວາມຣິດສະຫຍາ[໒]ແລະຄວາມຖືໂຕ[໓]ຈຶ່ງເກີດພອກພູນຂຶ້ນ

## ໑໕ ວະນະວາສີຕິດສະເຖຣະວັດຖຸ

### ເລື້ອງພຣະວະນະວາສີຕິດສະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໗໕] ຂໍ້ປະຕິບັດທີ່ເປັນເຫດໃຫ້ໄດ້ລາບເປັນແນວໜຶ່ງ
ຂໍ້ປະຕິບັດທີ່ໃຫ້ເຖິງນິບພານເປັນອີກແນວໜຶ່ງ
ພິກຂຸຜູ້ເປັນສາວົກຂອງພຣະພຸດທະເຈົ້າ
ຮູ້ແຈ້ງຂໍ້ປະຕິບັດທັງສອງນີ້ແລ້ວ ບໍ່ເພິ່ງຍິນດີສັກກາຣະ[໑]
ແຕ່ເພິ່ງເພີ່ມພູນວິເວກ[໒] (ໃຫ້ຕໍ່ເນື່ອງ)

**ພາລະວັກທີ ໕ ຈົບ**

# ໖. ປັນທິຕະວັກ

## ໝວດວ່າດ້ວຍບັນດິດ

## ໑. ຣາທະເຖຣະວັດຖຸ

### ເລື້ອງພຣະຣາທະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໗໖] ບຸກຄົນເພິ່ງເຫັນຜູ້ມີປັນຍາມັກຊີ້ໂທດ
ມັກເວົ້າຫ້າມໄວ້ ຄືຜູ້ຊີ້ບອກຂຸມຊັບ
(ແລະ) ເພິ່ງຄົບຜູ້ທີ່ເປັນບັນດິດເຊັ່ນນັ້ນ
ຍ້ອນເມື່ອຄົບຄົນເຊັ່ນນັ້ນ ຍ່ອມມີແຕ່ຄວາມຈະເລີນ ບໍ່ມີຄວາມເສື່ອມເລີຍ[໓]

## ໒. ອັດສະຊິປຸນັບພະສຸກວັດຖຸ

### ເລື້ອງພຣະອັດສະຊິແລະພຣະປຸນັບພະສຸກະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໗໗] ຜູ້ໃດເພິ່ງກ່າວສອນ ພໍ່າສອນ
ແລະຫ້າມຈາກຄວາມຊົ່ວ
ຜູ້ນັ້ນຍ່ອມເປັນທີ່ຮັກຂອງສັດຕະບຸຣຸດທັງຫຼາຍ
ແຕ່ບໍ່ເປັນທີ່ຮັກຂອງອະສັດຕະບຸຣຸດທັງຫຼາຍ[໑]

## ໓. ສັນນະເຖຣະວັດຖຸ

### ເລື້ອງພຣະສັນນະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໗໘] ບຸກຄົນບໍ່ເພິ່ງຄົບມິດຊົ່ວ[໒] ບໍ່ເພິ່ງຄົບຄົນຕ່ຳຊ້າ[໓]
ເພິ່ງຄົບແຕ່ກັນລະຍານະມິດ ເພິ່ງຄົບແຕ່ສັດຕະບຸຣຸດ

## ໔. ມະຫາກັບປິນະເຖຣະວັດຖຸ

### ເລື້ອງພຣະມະຫາກັບປິນະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໗໙] ບຸກຄົນຜູ້ອີ່ມເອີບໃນທຳ[໔] ມີໃຈຜ່ອງໃສ ຍ່ອມຢູ່ເປັນສຸກ
ບັນດິດຍ່ອມຍິນດີໃນທຳທີ່ພຣະອະຣິຍະປະກາດແລ້ວທຸກເມື່ອ

## ໕. ປັນທິຕະສາມະເນຣະວັດຖຸ

### ເລື້ອງບັນດິດສາມະເນນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໘໐] ຄົນໄຂນ້ຳ ຍ່ອມໄຂນ້ຳ
ຊ່າງສອນ ຍ່ອມດັດລູກສອນ
ຊ່າງໄມ້ ຍ່ອມຖາກໄມ້
ບັນດິດ ຍ່ອມເຝິກຕົນ[໑]

# ໖. ລະກຸນທະກະພັດທິຍະເຖຣະວັດຖຸ

## ເລື້ອງພຣະລະກຸນທະກະພັດທິຍະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໗໑] ພູສີລາລ້ວນ ເປັນແທ່ງທຶບ ຍ່ອມບໍ່ສະເທືອນຍ້ອນລົມ ສັນໃດ
ບັນດິດທັງຫຼາຍ ຍ່ອມບໍ່ຫວັ່ນໄຫວຍ້ອນນິນທາຫຼືສັນເສີນ໒ ສັນນັ້ນ

# ໗. ການະມາຕາວັດຖຸ

## ເລື້ອງມານດາຂອງນາງການາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໗໒] ບັນດິດທັງຫຼາຍຟັງທຳແລ້ວ ຍ່ອມຜ່ອງໃສ໓
ຄືແມ່ນ້ຳທີ່ເລິກ ໃສສະອາດ ບໍ່ຂຸ່ນມົວ ສັນນັ້ນ

# ໘. ປັນຈະສະຕະພິກຂຸວັດຖຸ

## ເລື້ອງພິກຂຸ ໕໐໐ ອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໗໓] ສັດຕະບຸຣຸດທັງຫຼາຍ ຍ່ອມເວັ້ນໃນທຳທັງປວງ໑
ສັດຕະບຸຣຸດທັງຫຼາຍຍ່ອມບໍ່ພ່ຳເພີ້ຍ້ອນການມະຖຸນເປັນເຫດ
ບັນດິດທັງຫຼາຍຈະປະສົບສຸກຫຼືທຸກ
ຍ່ອມບໍ່ສະແດງອາການຂຶ້ນລົງ໒

# ໙. ທຳມິກະເຖຣະວັດຖຸ

## ເລື້ອງພຣະທຳມິກະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໗໔] ບັນດິດຍ່ອມບໍ່ເຮັດບາບຍ້ອນຕົນເປັນເຫດ

ຫຼື ຍ້ອນຜູ້ອື່ນເປັນເຫດ
ບຸກຄົນບໍ່ເພິ່ງປາຖະໜາບຸດ ຊັບ ແວ່ນແຄວ້ນ
ຫຼືຄວາມສຳເລັດເພື່ອຕົນ ໂດຍບໍ່ຊອບທຳ
ເພິ່ງເປັນຜູ້ມີສິນ ມີປັນຍາ ແລະຢຶດໝັ້ນຢູ່ໃນທຳ

## ໑໐. ທຳມັດສະວະນະວັດຖຸ[໑]

### ເລື້ອງການຟັງທຳ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໘໕] ໃນໝູ່ມະນຸດ ເຫຼົ່າຊົນຜູ້ໄປເຖິງຝັ່ງນັ້ນ[໒] ມີຈຳນວນໜ້ອຍ
ສ່ວນໝູ່ສັດນອກນີ້ເລາະໄປຕາມຝັ່ງນີ້[໓]ສ່ວນຫຼາຍ

[໘໖] ສ່ວນຊົນເຫຼົ່າໃດປະພຶດຕາມທຳ
ໃນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຖືກຕ້ອງ[໔]
ຊົນເຫຼົ່ານັ້ນຈັກຂ້າມພົ້ນວັດຕະ
ອັນເປັນບ້ວງມານທີ່ຂ້າມໄດ້ແສນຍາກ ໄປເຖິງຝັ່ງນັ້ນໄດ້

## ໑໑. ປັນຈະສະຕະອາຄັນຕຸກະພິກຂຸວັດຖຸ

### ເລື້ອງພິກຂຸອາຄັນຕຸກະ ໕໐໐ ອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸອາຄັນຕຸກະຜູ້ຢູ່ໃນແຄວ້ນໂກສົນ ດັ່ງນີ້)

[໘໗] ບັນດິດລະທຳດຳ[໕] ແລ້ວເພິ່ງຈະເລີນທຳຂາວ[໖]
ອອກຈາກວັດຕະມາສູ່ວິວັດຕະ[໗]

[໘໘] ລະກາມທັງຫຼາຍແລ້ວ ເປັນຜູ້ໝົດຄວາມກັງວົນ
ເພິ່ງປາຖະໜາຍິນດີຍິ່ງໃນວິເວກທີ່ຍິນດີໄດ້ຍາກຍິ່ງ
ເພິ່ງຊຳຮະຕົນໃຫ້ຜ່ອງແຜ້ວຈາກເຄື່ອງເສົ້າໝອງແຫ່ງຈິດທັງຫຼາຍ

[໘໙] ບັນດິດເຫຼົ່າໃດອົບຮົມຈິດໂດຍຖືກຕ້ອງ
ໃນອົງທຳເປັນເຄື່ອງຕັດສະຣູ້ທັງຫຼາຍ
ບໍ່ຖືໝັ້ນ ຍິນດີໃນນິບພານເປັນທີ່ສະລະຄວາມຖືໝັ້ນ

ບັນດິດເຫຼົ່ານັ້ນສິ້ນອາສະວະແລ້ວ
ມີຄວາມຮຸ່ງເຮືອງ ດັບເຢັນແລ້ວໃນໂລກ[໑]

**ປັນທິຕະວັກທີ ໖ ຈົບ**

# ໗. ອະຣະຫັນຕະວັກ

## ໝວດວ່າດ້ວຍພຣະອະຣະຫັນ

## ໑. ຊີວະກະວັດຖຸ

### ເລື້ອງໝໍຊີວົກ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ໝໍຊີວົກ ດັ່ງນີ້)

[໙໐] ຜູ້ບັນລຸຈຸດໝາຍປາຍທາງແລ້ວ[໒]
ຂາດຄວາມໂສກ ລຸດພົ້ນແລ້ວໃນທຳທັງປວງ[໓]
ລະກິເລດເຄື່ອງຮ້ອຍຮັດ໔ໄດ້ໝົດ ຍ່ອມບໍ່ມີຄວາມຮ້ອນຮົນ

## ໒. ມະຫາກັດສະປະເຖຣະວັດຖຸ

### ເລື້ອງພຣະມະຫາກັດສະປະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໙໑] ຜູ້ມີສະຕິ ໝັ່ນປະກອບຄວາມພຽນ[໑]
ບໍ່ຕິດໃນບ່ອນຢູ່ ລະຄວາມຫ່ວງອາໄລໄປ
ຄືຫົງລະເປືອກຕົມໄປ ສັນນັ້ນ

## ໓. ເພລັດຖະສີສະເຖຣະວັດຖຸ

### ເລື້ອງພຣະເພລັດຖະສີສະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໙໒] ຜູ້ບໍ່ມີການສັ່ງສົມ[໒]

ກໍານົດຮູ້ອາຫານກ່ອນແລ້ວຈຶ່ງບໍຣິໂພກ
ມີສູນຍະຕະວິໂມກ[๑] ແລະອະນິມິດຕະວິໂມກ ເປັນອາລົມ
ບໍ່ຖິ້ມທາງໄວ້ໃຫ້ເປັນທີ່ຮູ້ໄດ້
ຄືນົກບໍ່ຖິ້ມທາງໄວ້ໃນອາກາດ ສັນນັ້ນ

## ໔. ອະນຸຣຸດທະເຖຣະວັດຖຸ

### ເລື້ອງພຣະອະນຸຣຸດທະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໙໓] ທ່ານຜູ້ສິ້ນອາສະວະແລ້ວ ບໍ່ຕິດໃນອາຫານ
ມີສູນຍະຕະວິໂມກ ແລະອະນິມິດຕະວິໂມກ ເປັນອາລົມ
ບໍ່ຖິ້ມຮ່ອງຮອຍໄວ້ໃຫ້ເປັນທີ່ຮູ້ໄດ້
ຄືນົກບໍ່ຖິ້ມຮ່ອງຮອຍໄວ້ໃນອາກາດ ສັນນັ້ນ[๑]

## ໕. ມະຫາກັດຈາຍະນະເຖຣະວັດຖຸ

### ເລື້ອງພຣະມະຫາກັດຈາຍະນະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໙໔] ຜູ້ໃດເຝິກອິນຊີ໌ໃຫ້ສະງົບໄດ້
ຄືມ້າທີ່ນາຍສາຣະຖີເຝິກດີແລ້ວ
ຜູ້ນັ້ນຍ່ອມລະມານະໄດ້ ບໍ່ມີອາສະວະ ໝັ້ນຄົງ
ແມ່ນທວຍເທບທັງຫຼາຍກໍຮັກແພງ

## ໖. ສາຣີປຸດຕະເຖຣະວັດຖຸ

### ເລື້ອງພຣະສາຣີບຸດເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໙໕] ພິກຂຸຜູ້ໝັ້ນຄົງ ມີຂໍ້ວັດປະຕິບັດງາມ
ບໍ່ຍິນດີຍິນຮ້າຍ ສະເໝີດ້ວຍແຜ່ນດິນ

ປຽບດ້ວຍເສົາເຂື່ອນ
(ມີໃຈຜ່ອງໃສ) ຄືແມ່ນ້ຳບໍ່ມີຕົມ
ສັງສາຣະວັດຍ່ອມບໍ່ມີແກ່ຜູ້ເຊັ່ນນັ້ນ

## ໗. ໂກສຳພີວາສີຕິດສະເຖຣະສາມະເນຣະວັດຖຸ

### ເລື້ອງສາມະເນນຂອງພຣະຕິດສະເຖຣະຊາວເມືອງໂກສຳພີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະຕິດສະເຖຣະຊາວເມືອງໂກສຳພີ ດັ່ງນີ້)

[໙໖] ຜູ້ລຸດພົ້ນຍ້ອນຮູ້ຖືກ ຜູ້ສະງົບ ຜູ້ໝັ້ນຄົງ
ຍ່ອມມີມະໂນກຳທີ່ສະງົບ ວະຈີກຳທີ່ສະງົບ ກາຍຍະກຳທີ່ສະງົບ

## ໘. ສາຣີປຸດຕະເຖຣະວັດຖຸ

### ເລື້ອງພຣະສາຣີບຸດເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ຢູ່ໃນປ່າ ໓໐ ອົງ ດັ່ງນີ້)

[໙໗] ນໍຣະຊົນໃດ ຜູ້ບໍ່ຕ້ອງເຊື່ອໃຜ[໑]
ຮູ້ຈັກນິບພານທີ່ປັດໄຈອັນໃດປຸງແຕ່ງບໍ່ໄດ້
ຕັດຮອຍຕໍ່[໑]ແຫ່ງການເກີດໃໝ່
ທຳລາຍໂອກາດ[໒] ແຫ່ງການທ່ອງທ່ຽວໄປໃນສົງສານ
ຄາຍຄວາມຫວັງແລ້ວ ນໍຣະຊົນນັ້ນແລ ເປັນບຸຣຸດສູງສຸດ[໓]

## ໙. ຂະທິຣະວະນິຍະເຣວະຕະເຖຣະວັດຖຸ

### ເລື້ອງພຣະເຣວະຕະເຖຣະຜູ້ຢູ່ໃນປ່າໄມ້ແຄນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ນາງວິສາຂາມິຄາຣະມາຕາ ດັ່ງນີ້)

[໙໘] ພຣະອະຣະຫັນທັງຫຼາຍຢູ່ສະຖານທີ່ບ່ອນໃດ
ຄື ຈະເປັນບ້ານກໍຕາມ ປ່າກໍຕາມ ບ່ອນຫຼຸບກໍຕາມ ບ່ອນໂນນກໍຕາມ
ສະຖານທີ່ບ່ອນນັ້ນ ເປັນຣຳມະນີຍະສະຖານ[໔]

## ໑໐. ອັນຍະຕະຣິດຖີວັດຖຸ

### ເລື່ອງຍິງຄົນໃດຄົນໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸອົງໜຶ່ງ ດັ່ງນີ້)

[໙໙] ທ່ານຜູ້ປາສະຈາກຣາຄະທັງຫຼາຍ
ຈະຍິນດີປ່າທັງຫຼາຍ ອັນໜ້າອອນຊອນ
ທີ່ຊົນຜູ້ສະແຫວງຫາກາມບໍ່ຍິນດີ
ຍ້ອນທ່ານເຫຼົ່ານັ້ນບໍ່ສະແຫວງຫາກາມ໌

**ອະຣະຫັນຕະວັກທີ ໗ ຈົບ**

## ໘. ສະຫັດສະວັກ

### ໝວດວ່າດ້ວຍໜຶ່ງໃນຮ້ອຍໃນພັນ

## ໑. ຕຳພະທາຖິກະໂຈຣະຄາຕະກະວັດຖຸ

### ເລື່ອງເພດຊະຄາດໂຈນເຄົາແດງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໐໐] ຄຳເວົ້າທີ່ມີປະໂຫຍດຄຳດຽວ໑
ທີ່ຄົນຟັງແລ້ວສະງົບລະງັບໄດ້໌
ຍ່ອມດີກວ່າຄຳເວົ້າທີ່ຂາດປະໂຫຍດຕັ້ງ ໑,໐໐໐ ຄຳ

## ໒. ພາຫິຍະທາຣຸຈີຣິຍະເຖຣະວັດຖຸ

### ເລື່ອງພຣະພາຫິຍະທາຣຸຈີຣິຍະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໐໑] ຄາຖາທີ່ມີປະໂຫຍດຄາຖາດຽວ
\ທີ່ຄົນຟັງແລ້ວສະງົບລະງັບໄດ້
ຍ່ອມດີກວ່າຄາຖາທີ່ຂາດປະໂຫຍດຕັ້ງ ໑,໐໐໐ ຄາຖາ

# ໓. ກຸນທົນເກສີເຖຣີວັດຖຸ

## ເລື້ອງພຣະກຸນທົນເກສີເຖຣີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໐໒] ທຳມະບົດໜຶ່ງ[໑] ທີ່ຄົນຟັງແລ້ວສະງົບລະງັບໄດ້
ຍ່ອມດີກວ່າຄາຖາທີ່ຂາດປະໂຫຍດຕັ້ງ ໑໐໐ ຄາຖາ

[໑໐໓] ຜູ້ຊະນະຂ້າເສິກຈຳນວນພັນຄູນດ້ວຍພັນໃນສົງຄາມ
ບໍ່ຊື່ວ່າຜູ້ຊະນະທີ່ຍອດຢ້ຽມ
ແຕ່ຜູ້ຊະນະຕົນ[໒]ໄດ້ ຈຶ່ງຊື່ວ່າ ຜູ້ຊະນະທີ່ຍອດຢ້ຽມ

# ໔. ອະນັດຖະປຸດສະກະພາມມະນະວັດຖຸ

## ເລື້ອງອະນັດຖະປຸດສະກະພາມ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພາມ ດັ່ງນີ້)

[໑໐໔] ການຊະນະຕົນຂອງບຸກຄົນຜູ້ເຝິກຕົນດີແລ້ວ[໓]
ປະພຶດສັງລວມຢູ່ປະຈຳນັ້ນແລ
ປະເສີດກວ່າການຊະນະຜູ້ອື່ນ

[໑໐໕] ເທວະດາ ຄົນທັບ ມານ ຫຼືພົມ
ບໍ່ອາດເຮັດໄຊຊະນະຂອງບຸກຄົນເຊັ່ນນັ້ນໃຫ້ກັບປຣາໄຊໄດ້ເລີຍ

# ໕. ສາຣີປຸດຕະເຖຣະມາຕຸລະພາມມະນະວັດຖຸ

## ເລື້ອງພາມຜູ້ເປັນລຸງຂອງພຣະສາຣີບຸດເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພາມຜູ້ເປັນລຸງຂອງພຣະສາຣີບຸດເຖຣະ ດັ່ງນີ້)

[໑໐໖] ການບູຊາຂອງບຸກຄົນຜູ້ບູຊາທ່ານທີ່ອົບຮົມຕົນດີ[໑]ແລ້ວ
ຄົນດຽວ ແມ່ນພຽງບຶດດຽວ
ປະເສີດກວ່າການບູຊາຂອງບຸກຄົນຜູ້ບູຊາຍັນ[໒]
ດ້ວຍຊັບຈຳນວນ ໑,໐໐໐ ກະຫາປະນະທຸກ ໆ ເດືອນ ຕະຫຼອດ ໑໐໐ ປີ

# ໖. ສາຣີປຸດຕະເຖຣະພາຄິເນີຍະວັດຖຸ

## ເລື້ອງພາມຜູ້ເປັນຫຼານຂອງພຣະສາຣີບຸດເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພາມຜູ້ເປັນຫຼານຂອງພຣະສາຣີບຸດເຖຣະ ດັ່ງນີ້)

[໑໐໗] ການບູຊາຂອງບຸກຄົນຜູ້ບູຊາທ່ານທີ່ອົບຮົມຕົນດີແລ້ວ
ຄົນດຽວ ແມ່ນພຽງບຶດດຽວ
ປະເສີດກວ່າການບູຊາຂອງບຸກຄົນຜູ້ບູຊາໄຟໃນປ່າເປັນເວລາ ໑໐໐ ປີ

# ໗. ສາຣີປຸດຕະເຖຣະສະຫາຍະກະພາມມະນະວັດຖຸ

## ເລື້ອງພາມຜູ້ເປັນເພື່ອນຂອງພຣະສາຣີບຸດເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພາມຜູ້ເປັນເພື່ອນຂອງພຣະສາຣີບຸດເຖຣະ ດັ່ງນີ້)

[໑໐໘] ການໄຫວ້ທ່ານຜູ້ປະຕິບັດຊື່ຕົງ
ປະເສີດກວ່າການບູຊາຍັນແລະການບວງສວງໃດ ໆ ໃນໂລກ
ທີ່ຜູ້ຫວັງບຸນເຮັດຢູ່ຕະຫຼອດປີ
ຍ້ອນການບູຊາຍັນແລະການບວງສວງທັງໝົດນັ້ນ
ມີຄ່າບໍ່ເຖິງໜຶ່ງໃນສີ່

# ໘. ອາຍຸວັດທະນະກຸມາຣະວັດຖຸ

## ເລື້ອງອາຍຸວັດທະນະກຸມານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ອາຍຸວັດນກຸມານແລະອຸປາສົກ ໕໐໐ ຄົນ ດັ່ງນີ້)

[໑໐໙] ທຳ ໔ ປະການ ຄື ອາຍຸ ວັນນະ ສຸຂະ ພະລະ
ຍ່ອມຈະເລີນແກ່ຜູ້ຂາບໄຫວ້ ຜູ້ອ່ອນນ້ອມຕໍ່ຜູ້ໃຫຍ່ ເປັນປະຈຳ

# ៙. ສັງກິດຈະສາມະເນຣະວັດຖຸ

## ເລື້ອງສັງກິດຈະສາມະເນນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸ ໕໐໐ ອົງ ດັ່ງນີ້)

[໑໑໐] ຜູ້ມີສິນ ເພ່ງພິນິດ ແມ່ນມີຊີວິດຢູ່ພຽງມື້ດຽວ
ປະເສີດກວ່າຄົນທຸສິນ ມີຈິດບໍ່ຕັ້ງໝັ້ນ
ທີ່ມີຊີວິດຢູ່ຕັ້ງ ໑໐໐ ປີ

## ໑໐. ຂານຸໂກນທັນຍະເຖຣະວັດຖຸ

### ເລື້ອງພຣະຂານຸໂກນທັນຍະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸ ໕໐໐ ອົງ ຜູ້ເປັນສິດພຣະຂານຸໂກນທັນຍະເຖຣະ ດັ່ງນີ້)

[໑໑໑] ຜູ້ມີປັນຍາ ເພ່ງພິນິດ ແມ່ນມີຊີວິດຢູ່ພຽງມື້ດຽວ
ປະເສີດກວ່າຜູ້ມີປັນຍາຊາມ ມີຈິດບໍ່ຕັ້ງໝັ້ນ
ທີ່ມີຊີວິດຢູ່ຕັ້ງ ໑໐໐ ປີ[໑]

## ໑໑. ສັບປະທາສະເຖຣະວັດຖຸ

### ເລື້ອງພຣະສັບປະທາດເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໑໒] ຜູ້ມີຄວາມພຽນໝັ້ນຄົງ[໒] ແມ່ນມີຊີວິດຢູ່ພຽງມື້ດຽວ
ປະເສີດກວ່າຜູ້ຂີ້ຄ້ານ ບໍ່ມີຄວາມພຽນ
ທີ່ມີຊີວິດຢູ່ຕັ້ງ ໑໐໐ ປີ

## ໑໒. ປະຕາຈາຣາເຖຣີວັດຖຸ

### ເລື້ອງພຣະປະຕາຈາຣາເຖຣີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະປະຕາຈາຣາເຖຣີ ດັ່ງນີ້)

[໑໑໓] ຜູ້ເຫັນຄວາມເກີດແລະຄວາມດັບ[໓] ແມ່ນມີຊີວິດຢູ່ພຽງມື້ດຽວ
ປະເສີດກວ່າຜູ້ບໍ່ເຫັນຄວາມເກີດແລະຄວາມດັບ
ທີ່ມີຊີວິດຢູ່ຕັ້ງ ໑໐໐ ປີ[໔]

## ໑໓. ກິສາໂຄຕະມີວັດຖຸ
### ເລື່ອງນາງກິສາໂຄຕະມີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ນາງກິສາໂຄຕະມີ ດັ່ງນີ້)

[໑໑໔] ຜູ້ເຫັນທາງອະມະຕະ[១] ແມ່ນມີຊີວິດຢູ່ພຽງມື້ດຽວ
ປະເສີດກວ່າຜູ້ບໍ່ເຫັນທາງອະມະຕະ
ທີ່ມີຊີວິດຢູ່ຕັ້ງ ໑໐໐ ປີ

## ໑໔. ພະຫຸປຸດຕິກາເຖຣີວັດຖຸ
### ເລື່ອງພຣະພະຫຸປຸດຕິກາເຖຣີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະພະຫຸປຸດຕິກາເຖຣີ ດັ່ງນີ້)

[໑໑໕] ຜູ້ເຫັນທຳອັນສູງສຸດ[២] ແມ່ນມີຊີວິດຢູ່ພຽງມື້ດຽວ
ປະເສີດກວ່າຜູ້ບໍ່ເຫັນທຳອັນສູງສຸດ
ທີ່ມີຊີວິດຢູ່ຕັ້ງ ໑໐໐ ປີ

**ສະຫັດສະວັກທີ ໘ ຈົບ**

# ໙. ປາປະວັກ
### ໝວດວ່າດ້ວຍບາບ

## ໑. ຈູເລກະສາຕະກະວັດຖຸ
### ເລື່ອງພາມຈູເລກະສາດົກ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໑໖] ບຸກຄົນຄວນຟ້າວເລັ່ງເຮັດບຸນ[១] ຄວນຫ້າມຈິດຈາກບາບ[២]
ຍ້ອນເມື່ອເຮັດບຸນຊ້າໄປໃຈຈະຍິນດີໃນບາບ

## ໒. ເສີຍຍະສະກະເຖຣະວັດຖຸ
### ເລື່ອງພຣະເສີຍຍະສະກະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະເສີຍຍະສະກະເຖຣະ ດັ່ງນີ້)

[໑໑໗] ຫາກບຸກຄົນເຮັດບາບໄປແລ້ວ ກໍບໍ່ຄວນເຮັດບາບນັ້ນຊ້ຳອີກ
ບໍ່ຄວນເຮັດຄວາມພໍໃຈໃນບາບນັ້ນ
ຍ້ອນການສັ່ງສົມບາບນຳທຸກມາໃຫ້

## ໓. ລາຊະເທວະທິຕາວັດຖຸ
## ເລື້ອງລາດເທບທິດາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ລາດເທບທິດາ ດັ່ງນີ້)

[໑໑໘] ຫາກບຸກຄົນເຮັດບຸນ ກໍຄວນເຮັດບຸນນັ້ນຢູ່ປະຈຳ ໆ
ຄວນເຮັດຄວາມພໍໃຈໃນບຸນນັ້ນ
ຍ້ອນການສັ່ງສົມບຸນນຳສຸກມາໃຫ້

## ໔. ອະນາຖະປິນທິກະເສດຖີວັດຖຸ

## ເລື້ອງອະນາຖະບິນດິກະເສດຖີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ ແກ່ອະນາຖະບິນດິກະເສດຖີ ແລະເທວະດາຜູ້ສິງ
ສະຖິດຢູ່ທີ່ຊຸ້ມປະຕູເຮືອນຂອງເສດຖີ ດັ່ງນີ້)

[໑໑໙] ຕາບໃດທີ່ບາບຍັງບໍ່ໃຫ້ຜົນ
ຕາບນັ້ນ ຄົນຊົ່ວຈະເຫັນບາບວ່າດີ
ແຕ່ເມື່ອໃດ ບາບໃຫ້ຜົນ
ເມື່ອນັ້ນ ຄົນຊົ່ວຈະເຫັນບາບວ່າຊົ່ວແທ້

[໑໒໐] ຕາບໃດທີ່ກຳດີຍັງບໍ່ໃຫ້ຜົນ
ຕາບນັ້ນ ຄົນດີຈະເຫັນກຳດີວ່າຊົ່ວ
ແຕ່ເມື່ອໃດ ກຳດີໃຫ້ຜົນ
ເມື່ອນັ້ນຄົນດີຈະເຫັນກຳດີວ່າດີແທ້

## ໕. ອະສັນຍະຕະປະຣິກຂາຣະພິກຂຸວັດຖຸ

## ເລື້ອງພິກຂຸຜູ້ບໍ່ເກັບຮັກສາບໍຣິຂານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸອົງໜຶ່ງ ດັ່ງນີ້)

[໑໒໑]  ບຸກຄົນຢ່າສຳຄັນວ່າບາບເລັກໜ້ອຍຄົງຈັກບໍ່ມາເຖິງ[°]
ແມ່ນໝໍ້ນ້ຳຍັງເຕັມດ້ວຍນ້ຳທີ່ຕົກລົງມາເທື່ອລະເມັດ ໆ ໄດ້ ສັນໃດ
ຄົນພານ ເມື່ອສັ່ງສົມບາບເທື່ອລະໜ້ອຍເທື່ອລະໜ້ອຍ
ກໍເຕັມດ້ວຍບາບໄດ້ ສັນນັ້ນ

## ຜ. ພິລາຣະປະທະກະເສດຖີວັດຖຸ

### ເລື້ອງພິລາຣະປະທະກະເສດຖີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ເສດຖີຜູ້ຢູ່ເມືອງສາວັດຖີ ດັ່ງນີ້)

[໑໒໒]  ບຸກຄົນຢ່າສຳຄັນວ່າບຸນເລັກໜ້ອຍຄົງຈັກບໍ່ມາເຖິງ
ແມ່ນໝໍ້ນ້ຳຍັງເຕັມດ້ວຍນ້ຳທີ່ຕົກລົງມາເທື່ອລະເມັດ ໆ ໄດ້ ສັນໃດ
ຄົນມີປັນຍາ ເມື່ອສັ່ງສົມບຸນແມ່ນເທື່ອລະໜ້ອຍເທື່ອລະໜ້ອຍ
ກໍເຕັມດ້ວຍບຸນໄດ້ ສັນນັ້ນ

## ກ. ມະຫາທະນະວານິຊະວັດຖຸ

### ເລື້ອງພໍ່ຄ້າຜູ້ມີຊັບຫຼາຍ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໒໓]  ບຸກຄົນຄວນລະເວັ້ນບາບທັງຫຼາຍ
ຄືພໍ່ຄ້າທີ່ມີຊັບຫຼາຍ ແຕ່ມີພວກໜ້ອຍ ຫຼີກຫຼີບທາງທີ່ມີໄພ
ແລະຄືຄົນຮັກຊີວິດຫຼີກຫຼີບຢາພິດ ສັນນັ້ນ

## ໗. ກຸກກຸຕະມິດຕະເນສາທະວັດຖຸ

### ເລື້ອງນາຍພານເນື້ອຊື່ກຸກກຸຕະມິດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໒໔]  ຫາກທີ່ຝາມືບໍ່ມີບາດ ບຸກຄົນກໍໃຊ້ຝາມືນຳຢາພິດໄປໄດ້
ຍ້ອນຢາພິດຈະບໍ່ຊຶມເຂົ້າໄປສູ່ຝາມືທີ່ບໍ່ມີບາດ
ຄືບາບບໍ່ມີແກ່ຜູ້ບໍ່ເຮັດບາບ ສັນນັ້ນ

# ໙. ໂກກະສຸນະຂະລຸດທະກະວັດຖຸ

## ເລື່ອງນາຍພານໝາຊື່ໂກກະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸອົງໜຶ່ງ ດັ່ງນີ້)

[໑໘໕] ບຸກຄົນໃດປະທຸດສະຮ້າຍຕໍ່ຄົນຜູ້ບໍ່ປະທຸດສະຮ້າຍ
ເປັນຜູ້ບໍລິສຸດ ບໍ່ມີກິເລດພຽງດັ່ງເນີນ
ບາບຍ່ອມກັບມາເຖິງບຸກຄົນນັ້ນເຊິ່ງເປັນຄົນພານຢ່າງແນ່ແທ້
ຄືຝຸ່ນທຸລີອັນລະອຽດທີ່ບຸກຄົນຊັດໄປທວນລົມ ສັນນັ້ນ[໑]

# ໑໐. ມະນີກາຣະກຸລຸປະກະຕິດສະເຖຣະວັດຖຸ

## ເລື່ອງພຣະຕິດສະເຖຣະຜູ້ເຂົ້າເຖິງຕະກູນຊ່າງແກ້ວ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໘໖] ສັດພວກໜຶ່ງ ຍ່ອມເກີດໃນທ້ອງ[໒]
ພວກທີ່ເຮັດບາບກຳຍ່ອມໄປນະຮົກ
ພວກທີ່ທຳຄວາມດີຍ່ອມໄປສະຫວັນ
ສ່ວນຜູ້ທີ່ບໍ່ມີອາສະວະຍ່ອມນິບພານ

# ໑໑. ຕະໂຍຊະນະວັດຖຸ

## ເລື່ອງຄົນ ໓ ຈຳພວກ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໘໗] ຄົນເຮັດບາບ ເຖິງຈະເຫາະຂຶ້ນໄປໃນອາກາດ ກໍບໍ່ພົ້ນຈາກບາບກຳ
ເຖິງຈະມຸດລົງໄປກາງທະເລ ກໍບໍ່ພົ້ນຈາກບາບກຳ
ເຖິງຈະເຂົ້າໄປຫຼົບໂຕໃນຮ່ອມພູ ກໍບໍ່ພົ້ນຈາກບາບກຳ
ຍ້ອນບໍ່ມີແຜ່ນດິນຈັກສ່ວນໜຶ່ງທີ່ຄົນເຮັດບາບຢືນຢູ່ແລ້ວ
ຈະພົ້ນຈາກບາບກຳໄດ້

# ໑໔. ສຸບປະພຸດທະສັກກະວັດຖຸ

## ເລື່ອງເຈົ້າສາກະຍະສຸບປະພຸດທະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໔໗] ບຸກຄົນ ເຖິງຈະເຫາະຂຶ້ນໄປໃນອາກາດ ກໍບໍ່ພົ້ນຈາກຄວາມຕາຍ
ເຖິງຈະມຸດລົງໄປກາງທະເລ ກໍບໍ່ພົ້ນຈາກຄວາມຕາຍ
ເຖິງຈະເຂົ້າໄປຫຼົບໂຕໃນຮ່ອມພູ ກໍບໍ່ພົ້ນຈາກຄວາມຕາຍ
ຍ້ອນບໍ່ມີແຜ່ນດິນຈັກສ່ວນໜຶ່ງທີ່ບຸກຄົນຢືນຢູ່ແລ້ວ
ຈະບໍ່ຖືກຄວາມຕາຍຄອບງໍາໄດ້

**ປາປະວັກທີ ໙ ຈົບ**

# ໑໐. ທັນທະວັກ

## ໝວດວ່າດ້ວຍການລົງທັນ[๑]

# ໑. ສັບພັກຄີຍະພິກຂຸວັດຖຸ

## ເລື່ອງພຣະສັບພັກຄີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໔໙] ສັດທຸກປະເພດ ຍ່ອມສະດຸ້ງຢ້ານການລົງໂທດ
ສັດທຸກປະເພດ ຍ່ອມຢ້ານກົວຄວາມຕາຍ
ບຸກຄົນນໍາຕົນເຂົ້າໄປປຽບທຽບແລ້ວ
ບໍ່ຄວນຂ້າເອງ ບໍ່ຄວນໃຊ້ໃຫ້ຄົນອື່ນຂ້າ

# ໔. ສັບພັກຄີຍະພິກຂຸວັດຖຸ

## ເລື່ອງພຣະສັບພັກຄີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໓໐] ສັດທຸກປະເພດ ຍ່ອມສະດຸ້ງຢ້ານການລົງໂທດ
ສັດທຸກປະເພດ ຍ່ອມຮັກຊີວິດ໌
ບຸກຄົນນຳຕົນເຂົ້າໄປປຽບທຽບແລ້ວ
ບໍ່ຄວນຂ້າເອງ ບໍ່ຄວນໃຊ້ໃຫ້ຄົນອື່ນຂ້າ

## ໓. ສຳພະຫຸລະກຸມາຣະວັດຖຸ

### ເລື້ອງເດັກຊາຍຫຼາຍຄົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ເດັກຊາຍຊາວເມືອງສາວັດຖີປະມານ ໕໐໐ ຄົນ ທີ່ກຳລັງຕີງູໃນລະຫວ່າງທາງ ດັ່ງນີ້)

[໑໓໑] ຜູ້ໃດໃຝ່ຫາຄວາມສຸກເພື່ອຕົນ
ແຕ່ກັບໃຊ້ໄມ້ຄ້ອນທຳຮ້າຍສັດທັງຫຼາຍຜູ້ຮັກສຸກ
ຜູ້ນັ້ນຕາຍໄປແລ້ວຍ່ອມບໍ່ໄດ້ຮັບຄວາມສຸກເລີຍ

[໑໓໒] ສ່ວນຜູ້ໃດໃຝ່ຫາຄວາມສຸກເພື່ອຕົນ
ບໍ່ໃຊ້ໄມ້ຄ້ອນທຳຮ້າຍສັດທັງຫຼາຍຜູ້ຮັກສຸກ
ຜູ້ນັ້ນຕາຍໄປແລ້ວຍ່ອມໄດ້ຮັບຄວາມສຸກ໌

## ໔. ໂກນດະທານະເຖຣະວັດຖຸ

### ເລື້ອງພຣະໂກນດະທານເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະໂກນດະທານເຖຣະ ດັ່ງນີ້)

[໑໓໓] ທ່ານຢ່າໄດ້ກ່າວຄຳຫຍາບຕໍ່ໃຜ ໆ
ຄົນທີ່ຖືກທ່ານວ່າກ່າວຈະກ່າວໂຕ້ຕອບທ່ານ
ຍ້ອນວ່າຄຳເວົ້າທີ່ໂຕ້ຖຽງກັນ ກໍ່ໃຫ້ເກີດທຸກ
ແລະການທຳຮ້າຍໂຕ້ຕອບກັນຈະມາເຖິງທ່ານ

[໑໓໔] ຖ້າທ່ານເຮັດຕົນໃຫ້ມິດງຽບໄດ້
ຄືກັງສະດານ໌ທີ່ຕັດຂອບປາກອອກແລ້ວ
ທ່ານກໍຈະບັນລຸນິບພານໄດ້
ການໂຕ້ຖຽງກັນກໍຈະບໍ່ມີແກ່ທ່ານ

# ໕. ອຸໂປສະຖິກະອິດຖີວັດຖຸ

## ເລື້ອງແມ່ຍິງຜູ້ຮັກສາອຸໂປສົດສິນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ນາງວິສາຂາແລະຍິງຜູ້ຮັກສາອຸໂປສົດສິນ ປະມານ ໕໐໐ ຄົນ ດັ່ງນີ້)

[໑໓໕] ຄົນລ້ຽງງົວໃຊ້ໄມ້ຄ້ອນໄລ່ຕ້ອນຝູງງົວໄປສູ່ບ່ອນຫາກິນ ສັນໃດ
ຄວາມແກ່ແລະຄວາມຕາຍ ກໍໄລ່ຕ້ອນອາຍຸຂອງສັດທັງຫຼາຍໄປ ສັນນັ້ນ

# ໖. ອະຊະຄະຣະເປຕະວັດຖຸ

## ເລື້ອງເຜດງູເຫຼືອມ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໓໖] ຄົນພານມີປັນຍາຊາມ ເມື່ອເຮັດບາບກຳຍ່ອມບໍ່ຮູ້ສຶກໂຕ
ຈຶ່ງມັກເດືອດຮ້ອນຍ້ອນກຳຂອງຕົນ
ຄືຄົນຖືກໄຟໄໝ້ ສັນນັ້ນ

# ໗. ມະຫາໂມກຄັນລານະເຖຣະວັດຖຸ

## ເລື້ອງພຣະມະຫາໂມກຄັນລານະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໓໗] ຜູ້ໃດປະທຸດສະຮ້າຍຄົນທີ່ບໍ່ມີຄວາມຜິດ[໑]
(ແລະ) ຄົນທີ່ບໍ່ປະທຸດສະຮ້າຍ[໒] (ຕອບ) ດ້ວຍການລົງໂທດ
ຜູ້ນັ້ນຍ່ອມໄດ້ຮັບຜົນຢ່າງ ໑ ໃນ ໑໐ ຢ່າງ ຄື

[໑໓໘] (໑) ທຸກຂະເວທະນາຢ່າງແຮງກ້າ
(໒) ຖືກທຳຮ້າຍຮ່າງກາຍ
(໓) ກາຍເປັນຄົນວິກົນຈະລິດ
(໔) ເສື່ອມຊັບ
(໕ ເຈັບປ່ວຍຢ່າງໜັກ

[໑໓໙] (໖) ຕ້ອງຣາຊະໄພ[໑]
(໗) ເສື່ອມຍາດ
(໘) ຖືກກ່າວຫາຢ່າງຮ້າຍແຮງ
(໙ ຊັບສົມບັດພິນາດຍ່ອຍຍັບ

[໑໔໐] (໑໐) ບ້ານເຮືອນຖືກໄຟໄໝ້

ເຂົາຜູ້ມີປັນຍາຊາມ ເມື່ອຕາຍໄປຍ່ອມຕົກນະຮົກ

## ໗. ພະຫຸພັນທິກະພິກຂຸວັດຖຸ

### ເລື້ອງພິກຂຸຜູ້ມີເຄື່ອງໃຊ້ສອຍຫຼາຍ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ມີເຄື່ອງໃຊ້ສອຍຫຼາຍ ດັ່ງນີ້)

[໑໔໑] ການເປັນຄົນເປືອຍ ການເກົ້າຊະດາ ການເອົາຕົມທາໂຕ
ການອົດອາຫານ ການນອນເທິງພື້ນດິນ
ການມີກາຍໝັກໝົມດ້ວຍທຸລີ
ຫຼືການເຮັດຄວາມພຽນດ້ວຍການນັ່ງຍ່ອງຍໍ້

ຂໍ້ວັດປະຕິບັດທັງໝົດເຫຼົ່ານີ້ ບໍ່ອາດຊຳຣະຄົນຜູ້ຍັງບໍ່ລ່ວງພົ້ນຄວາມສົງໄສໃຫ້ບໍລິສຸດໄດ້

## ໘. ສັນຕະຕິມະຫາມັດຕະວັດຖຸ

### ເລື້ອງສັນຕະຕິມະຫາອຳມາດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໔໒] ແມ່ນບຸກຄົນຈະແຕ່ງໂຕແບບໃດກໍຕາມ
ຖ້າເຂົາເປັນຜູ້ສະງົບ ເຝິກຕົນໄດ້ ເປັນຜູ້ແນ່ນອນ ປະພຶດພົມມະຈັນ
ລະເວັ້ນການບຽດບຽນສັບພະສັດ ປະພຶດສະໝ່ຳສະເໝີ
ຄວນຮຽກບຸກຄົນເຊັ່ນນັ້ນວ່າ ພາມ ສະມະນະ ຫຼືພິກຂຸ[១] ກໍໄດ້

## ໑໐. ປິໂລຕິກະຕິດສະເຖຣະວັດຖຸ

### ເລື້ອງພຣະປິໂລຕິກະຕິດສະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໔໓] ບຸກຄົນຜູ້ກີດກັນອະກຸສົນວິຕົກໄດ້ດ້ວຍຫິຣິ ມີຢູ່ໜ້ອຍຄົນໃນໂລກ
ພິກຂຸໃດຫຼີກຫຼີກນິນທາໄດ້ ຕື່ນໂຕຢູ່ ຄືມ້າຊັ້ນດີຫຼີກແສ້ໄດ້
ພິກຂຸເຊັ່ນນັ້ນມີຢູ່ໜ້ອຍອົງ[២]

[໑໔໔] ທ່ານທັງຫຼາຍຈິ່ງມີຄວາມພຽນແລະມີສັງເວຄະທຳ[໑]
ຄືມ້າດີທີ່ຖືກລົງແສ້ ທ່ານທັງຫຼາຍມີສັດທາ ສີນ ວິຣິຍະ
ສະມາທິ ແລະທຳມະວິນິດໄສ[໒]
ສົມບູນດ້ວຍວິດຊາແລະຈະຣະນະ ມີສະຕິໝັ້ນຄົງ
ກໍາຈັກລະທຸກ[໓]ມີປະມານບໍ່ໜ້ອຍນີ້ໄດ້

## ໑໑. ສຸຂະສາມະເນຣະວັດຖຸ

### ເລື້ອງສຸກສາມະເນນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໔໕] ຄົນໄຂນ້ຳ ຍ່ອມໄຂນ້ຳ
ຊ່າງສອນ ຍ່ອມດັດລູກສອນ
ຊ່າງໄມ້ ຍ່ອມຖາກໄມ້
ຜູ້ມີຂໍ້ວັດປະຕິບັດດີ[໔] ຍ່ອມເຝິກຕົນ[໕]

**ທັນດະວັກທີ ໑໐ ຈົບ**

## ໑໑. ຊະຣາວັກ

### ໝວດວ່າດ້ວຍຄວາມຊະຣາ

## ໑. ວິສາຂາສະຫາຍິກາວັດຖຸ

### ເລື້ອງຍິງສະຫາຍຂອງນາງວິສາຂາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ຍິງປະມານ ໕໐໐ ຄົນ ດັ່ງນີ້)

[໑໔໖] ເມື່ອໂລກລຸກເປັນໄຟ[໖]ຢູ່ຕະຫຼອດ
ເປັນຫຍັງ ຈຶ່ງມົວຫົວມ່ວນຊື່ນກັນຢູ່ນໍ
ທ່ານທັງຫຼາຍ ຖືກຄວາມມືດ[໗]ປົກຄຸມ
ເປັນຫຍັງ ບໍ່ສະແຫວງຫາດວງປະທີບ[໘]ກັນນໍ

# ໒. ສິຣິມາວັດຖຸ

## ເລື້ອງນາງສິຣິມາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ບໍລິສັດ ໔ ທີ່ຫຸ້ມເບິ່ງສົບນາງສິຣິມາ ດັ່ງນີ້)

[໑໔໗] ຈົ່ງເບິ່ງອັດຕະພາບທີ່ຕົກແຕ່ງຢ່າງຈົບງາມ
ແຕ່ມີກາຍເປັນບາດ[໔] ມີກະດູກເປັນໂຄງຮ່າງ[໕]
ອັນກະສັບກະສ່າຍ ທີ່ມະຫາຊົນດຳຣິຫວັງກັນຫຼາຍ[໖]
ເຊິ່ງບໍ່ມີຄວາມໝັ້ນຍືນຖາວອນ

# ໓. ອຸດຕະຣາເຖຣີວັດຖຸ

## ເລື້ອງພຣະອຸດຕະຣາເຖຣີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະອຸດຕະຣາເຖຣີຜູ້ມີອາຍຸ ໑໒໐ ປີ ດັ່ງນີ້)

[໑໔໘] ຮ່າງກາຍນີ້ແກ່ຫງ່ອມແລ້ວ
ເປັນຮັງຂອງພະຍາດ ມີແຕ່ຈະຊຸດໂຊມລົງໄປ
ຮ່າງກາຍທີ່ເນົ່າເປື່ອຍນີ້ກໍຈະແຕກດັບໄປ
ຍ້ອນຊີວິດມີຄວາມຕາຍເປັນບ່ອນສຸດ

# ໔. ອະທິມານິກະພິກຂຸວັດຖຸ

## ເລື້ອງພິກຂຸຜູ້ເຂົ້າໃຈວ່າຕົນສຳເລັດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍທີ່ກຳລັງເບິ່ງຊາກສົບໃນປ່າຊ້າ ດັ່ງນີ້)

[໑໔໙] ກະດູກເຫຼົ່ານີ້ມີສີຄືສີນົກກາງແກ
ຖືກເຂົາຖິ້ມໄວ້ຊະຊາຍ
ຄືໝາກນ້ຳເຕົ້າທີ່ຫຼົ່ນຊະຊາຍໃນສາຣະທະການ[໗]
ຄວາມຍິນດີອັນໃດນໍຈະເກີດ ຍ້ອນເຫັນກະດູກເຫຼົ່ານັ້ນ

## ໕. ຊະນະປະທະກັນລະຍານີຣູປະນັນທາເຖຣີວັດຖຸ
## ເລື້ອງພຣະຣູປະນັນທາເຖຣີຜູ້ງາມໃນຣັດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະຣູປະນັນທາເຖຣີຜູ້ສຳຄັນຕົນວ່າງາມ ດັ່ງນີ້)

[໑໕໐] ຮ່າງກາຍນີ້ຖືກສ້າງໃຫ້ເປັນນະຄອນແຫ່ງກະດູກ
ສາບດ້ວຍຊີ້ນແລະເລືອດ ເປັນທີ່ສະຖິດແຫ່ງຄວາມແກ່
ຄວາມຕາຍ ຄວາມຖືໂຕ ແລະຄວາມລົບຫຼູ່ກັນ

## ໖. ມັນລິກາເທວີວັດຖຸ

## ເລື້ອງພຣະນາງມັນລິກາເທວີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະເຈົ້າປະເສນທິໂກສົນຜູ້ເສຍພຣະທະໄທຍ້ອນການຈາກໄປຂອງພຣະນາງມັນລິກາເທວີ ດັ່ງນີ້)

[໑໕໑] ຮາດຊະລົດອັນວິຈິດງົດງາມ ຍັງເປ່ເພໄດ້
ແມ່ນແຕ່ຮ່າງກາຍນີ້ ກໍຍັງເຂົ້າເຖິງຊະຣາໄດ້
ແຕ່ທຳຂອງສັດຕະບຸຣຸດ[໑]ບໍ່ເຂົ້າເຖິງຊະຣາໄດ້
ສັດຕະບຸຣຸດກັບສັດຕະບຸຣຸດຮູ້ກັນໄດ້ແນວນີ້[໒]

## ໗. ໂລລຸທາຍີເຖຣະວັດຖຸ

## ເລື້ອງພຣະໂລລຸທາຍີເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໕໒] ຄົນທີ່ມີການສຶກສາໜ້ອຍນີ້
ຍ່ອມແກ່ໄປເປົ່າຄືງົວພະລິພັດ
ເຂົາຈະເລີນແຕ່ຊີ້ນໜັງ ສ່ວນປັນຍາບໍ່ຈະເລີນ[໓]

## ໘. ປະຖົມໂພທິວັດຖຸ
## ເລື້ອງເຫດການເວລາທຳອິດຕັດສະຮູ້

(ພຣະຜູ້ມີພຣະພາກເຈົ້າຊົງເປ່ງອຸທານ ດັ່ງນີ້)

[໑໕໓] ເຮົາຕາມຫານາຍຊ່າງ"ຜູ້ສ້າງເຮືອນ" ເມື່ອບໍ່ພໍ້ຜ
ຈຶ່ງທ່ອງທ່ຽວໄປໃນສົງສານເປັນອະເນກະຊາດ
ຍ້ອນການເກີດຢູ່ປະຈຳ ໆ ເປັນທຸກ

[໑໕໔] ນາຍຊ່າງເອີຍ ເຮົາພົບທ່ານແລ້ວ
ທ່ານຈະສ້າງເຮືອນບໍ່ໄດ້ອີກ
ກະດູກຂ້າງ"ທຸກອັນຂອງທ່ານ ເຮົາຫັກແລ້ວ
ຍອດເຮືອນ"ເຮົາກໍຮື້ແລ້ວ
ຈິດຂອງເຮົາເຖິງທຳປາສະຈາກເຄື່ອງປຸງແຕ່ງແລ້ວ
ເຮົາໄດ້ບັນລຸທຳເປັນບ່ອນສິ້ນສຸດຕັນຫາແລ້ວ"

## ໙. ມະຫາທະນະເສດຖີປຸດຕະວັດຖຸ

## ເລື່ອງບຸດເສດຖີຜູ້ມີຊັບຫຼາຍ

(ພຣະຜູ້ມີພຣະພາກເຈົ້າຊົງຜາຣົບບຸດເສດຖີຜູ້ໃຊ້ສອຍຊັບສົມບັດຈົນໝົດ ຈຶ່ງຕັດພຣະຄາຖານີ້ແກ່ພຣະອານົນ ດັ່ງນີ້)

[໑໕໕] ພວກຄົນໂງ່ຈ້າບໍ່ປະພຶດຕົນໃຫ້ເປັນຄົນດີ
ໃນໄວໜຸ່ມສາວກໍບໍ່ໄດ້ຫາຊັບໄວ້ ຍ່ອມຈຸກເຈົ່າ
ຄືນົກກະຽນແກ່ຈຸກເຈົ່າຢູ່ເທິງຕົມແຫ້ງບໍ່ມີປາ ສັນນັ້ນ

[໑໕໖] ພວກຄົນໂງ່ຈ້າບໍ່ປະພຶດຕົນໃຫ້ເປັນຄົນດີ
ໃນໄວໜຸ່ມສາວກໍບໍ່ໄດ້ຫາຊັບໄວ້
ຍ່ອມນອນຮ່ຳໄຮເຖິງຄວາມຫຼັງ
ຄືລູກທະນູທີ່ພົ້ນຈາກແລ່ງ ສັນນັ້ນ

**ຊະຣາວັກທີ ໑໑ ຈົບ**

# ໑໒. ອັດຕະວັກ
## ໝວດວ່າດ້ວຍຕົນ

### ໑. ໂພທິຣາຊະກຸມາຣະວັດຖຸ
### ເລື້ອງໂພທິຣາດຊະກຸມານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ໂພທິຣາດຊະກຸມານ ດັ່ງນີ້)

[໑໕໗] ຖ້າບຸກຄົນຮູ້ວ່າຕົນເປັນທີ່ຮັກ ກໍຄວນຮັກສາຕົນນັ້ນໄວ້ໃຫ້ດີ
ບັນດິດເພິ່ງປະຄັບປະຄອງຕົນໄວ້ໃຫ້ໄດ້[១]
ຢ່າງໜ້ອຍຍາມໃດຍາມໜຶ່ງໃນ ໓ ຍາມ[២]

### ໒. ອຸປະນັນທະສັກກະຍະປຸດຕະເຖຣະວັດຖຸ
### ເລື້ອງພຣະອຸປະນັນທະສາກະຍະບຸດເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸໜຸ່ມ ໒ ອົງ ດັ່ງນີ້)

[໑໕໘] ບັນດິດເພິ່ງຕັ້ງຕົນໄວ້ໃນຄຸນນະທຳທີ່ເໝາະສົມກ່ອນ
ແລ້ວສອນຄົນອື່ນໃນພາຍຫຼັງ[៣] ຈຶ່ງຈະບໍ່ມົວໝອງ[៤]

### ໓. ປະທານິກະຕິດສະເຖຣະວັດຖຸ

### ເລື້ອງພຣະປະທານິກະຕິດສະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸປະມານ ໕໐໐ ອົງ ດັ່ງນີ້)

[໑໕໙] ບຸກຄົນສອນຜູ້ອື່ນແນວໃດ ກໍເພິ່ງເຮັດຕົນແນວນັ້ນ
ຜູ້ທີ່ເຝິກຕົນດີແລ້ວ ຈຶ່ງຄວນເຝິກ (ຜູ້ອື່ນ)
ຍ້ອນຕົນນັ້ນແລເຝິກໄດ້ຍາກຍິ່ງ

### ໔. ກຸມາຣະກັດສະປະມາຕາວັດຖຸ
### ເລື້ອງມານດາຂອງພຣະກຸມານກັດສະປະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໖໐] ຕົນແລເປັນທີ່ເພິ່ງຂອງຕົນ[໑] ບຸກຄົນອື່ນໃຜນໍ ຈະເປັນທີ່ເພິ່ງໄດ້
ຍ້ອນບຸກຄົນທີ່ເຝິກຕົນດີແລ້ວ ຍ່ອມໄດ້ທີ່ເພິ່ງອັນໄດ້ໂດຍຍາກ

## ໕. ມະຫາກາລະອຸປາສະກະວັດຖຸ
## ເລື້ອງມະຫາການອຸປາສົກ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໖໑] ບາບທີ່ຕົນເອງເຮັດ ເກີດໃນຕົນ ມີຕົນເປັນແດນເກີດ
ຍ່ອມທຳລາຍຄົນມີປັນຍາຊາມ
ຄືເພັດທີ່ເກີດຈາກຫີນທຳລາຍແກ້ວມະນີ ສັນນັ້ນ

## ໖. ເທວະທັດຕະວັດຖຸ
## ເລື້ອງພຣະເທວະທັດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໖໒] ຄວາມທຸສີນໂດຍທັງໝົດ[໑]
ຍ່ອມກຸ້ງວຮັດອັດຕະພາບຂອງບຸກຄົນຜູ້ທຸສີນໄວ້
ຄືເຄືອເຂົາທີ່ກຸ້ງວຮັດຕົ້ນສາລະໄວ້
ເຂົາຍ່ອມເຮັດຕົນໃຫ້ວິບັດຄືໂຈນປາຖະໜາໃຫ້ເຂົາວິບັດ ສັນນັ້ນ

## ໗. ສັງຄະເພທະປະຣິສັກກະນະວັດຖຸ
## ເລື້ອງຄວາມພະຍາຍາມເພື່ອທຳລາຍສົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະອານົນທາຣົບເຖິງພຣະເທວະທັດ ດັ່ງນີ້)

[໑໖໓] ກຳທີ່ບໍ່ດີ ແລະບໍ່ມີປະໂຫຍດແກ່ຕົນ ເຮັດໄດ້ງ່າຍ
ສ່ວນກຳທີ່ດີ ແລະມີປະໂຫຍດ ເຮັດໄດ້ຍາກຢ່າງຍິ່ງ

## ໘. ກາລະເຖຣະວັດຖຸ

## ເລື້ອງພຣະກາລະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະການເຖຣະແລະຊົນທັງຫຼາຍ ດັ່ງນີ້)

[໑໖໔]  ຜູ້ມີປັນຍາຊາມ ອາໄສທິດຖິຊົ່ວ
ຄັດຄ້ານຄຳສອນຂອງພຣະອະຣິຍະ
ຜູ້ເປັນພຣະອະຣະຫັນ ຜູ້ດຳລົງຢູ່ໂດຍທຳ
ການຄັດຄ້ານແລະທິດຖິຊົ່ວນັ້ນ
ເກີດຂຶ້ນມາເພື່ອທຳລາຍຕົນເອງ
ຄືຂີໄຜ່ທຳລາຍຕົ້ນໄຜ່ ສັນນັ້ນ

## ໙. ຈູລະກາລະອຸປາສະກະວັດຖຸ
## ເລື້ອງຈູລະການອຸປາສົກ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ຈູລະການອຸປາສົກ ດັ່ງນີ້)

[໑໖໕]  ຕົນເຮັດບາບກຳເອງ ກໍເສົ້າໝອງເອງ[1]
ຕົນບໍ່ເຮັດບາບກຳເອງ ກໍບໍລິສຸດເອງ
ຄວາມບໍລິສຸດ ແລະບໍ່ບໍລິສຸດ ເປັນຂອງສະເພາະຕົນ
ຄົນອື່ນຈະເຮັດຄົນອື່ນໃຫ້ບໍລິສຸດບໍ່ໄດ້[2]

## ໑໐. ອັດຕະທັດຖະເຖຣະວັດຖຸ
## ເລື້ອງພຣະອັດຕະທັດຖະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະອັດຕະທັດຖະເຖຣະ ດັ່ງນີ້)

[໑໖໖]  ບຸກຄົນບໍ່ຄວນໃຫ້ປະໂຫຍດຕົນ[3]ເສຍໄປ
ຍ້ອນປະໂຫຍດຄົນອື່ນແມ່ນຫຼາຍ
ເມື່ອຮູ້ປະໂຫຍດຕົນແລ້ວ
ກໍຄວນຂົນຂວາຍໃນປະໂຫຍດຕົນ

**ອັດຕະວັກທີ ໑໒ ຈົບ**

# ໑໓. ໂລກະວັກ

## ໝວດວ່າດ້ວຍເລື້ອງໂລກ

## ໑. ທະຫະຣະພິກຂຸວັດຖຸ

### ເລື້ອງພິກຂຸໜຸ່ມ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸໜຸ່ມອົງໜຶ່ງ ດັ່ງນີ້)

[໑໖໗] ບຸກຄົນບໍ່ເພິ່ງເສບສິ່ງຕ່ຳຊາມ[໑]
ບໍ່ກໍຈະຢູ່ດ້ວຍຄວາມຜະໝາດ
ບໍ່ເພິ່ງຢຶດຖືຄວາມເຫັນຜິດ
ບໍ່ເພິ່ງເປັນຄົນຮົກໂລກ

## ໒. ສຸດໂທທະນະວັດຖຸ

### ເລື້ອງພຣະເຈົ້າສຸດໂທທະນະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະເຈົ້າສຸດໂທທະນະພຣະບິດາຂອງພຣະອົງ ດັ່ງນີ້)

[໑໖໘] ພິກຂຸບໍ່ເພິ່ງຜະໝາດບິນທະບາດທີ່ຕົນຢືນຮັບ[໒]
ເພິ່ງປະພຶດສຸດຈະຣິດທຳ[໓]
ຜູ້ປະພຶດທຳຍ່ອມຢູ່ເປັນສຸກທັງໃນໂລກນີ້ແລະໂລກໜ້າ

[໑໖໙] ເພິ່ງປະພຶດສຸດຈະຣິດທຳ
ບໍ່ເພິ່ງປະພຶດທຸດຈະຣິດທຳ
ຜູ້ປະພຶດທຳຍ່ອມຢູ່ເປັນສຸກທັງໃນໂລກນີ້ແລະໂລກໜ້າ

## ໓. ປັນຈະສະຕະວິປັດສະກະພິກຂຸວັດຖຸ

### ເລື້ອງພິກຂຸຜູ້ຈະເລີນວິປັດສະນາ ໕໐໐ ອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ຈະເລີນວິປັດສະນາ ໕໐໐ ອົງ ດັ່ງນີ້)

[໑໗໐] ມັດຈຸຣາດຍ່ອມບໍ່ເຫັນບຸກຄົນຜູ້ພິຈາລະນາເຫັນໂລກ໑
ຄືເຫັນຟອງນໍ້າ ຄືເຫັນພະຍັບແດດ

## ໔. ອະພະຍະຣາຊະກຸມາຣະວັດຖຸ
## ເລື້ອງອະໄພຣາດຊະກຸມານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ອະໄພຣາດຊະກຸມານ ດັ່ງນີ້)

[໑໗໑] ທ່ານທັງຫຼາຍຈົ່ງມາເບິ່ງໂລກນີ້[໔] ທີ່ວິຈິດຄືຣາດຊະລົດ
ທີ່ພວກຄົນຈົ໊າໝົກມຸ້ນຢູ່ ແຕ່ພວກຜູ້ຮູ້ບໍ່ຂ້ອງຢູ່[໓]

## ໕. ສຳມັດຊະນະເຖຣະວັດຖຸ
## ເລື້ອງພຣະສຳມັດຊະນະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໗໒] ຜູ້ໃດຜະໝາດແລ້ວໃນການກ່ອນ
ພາຍຫຼັງບໍ່ຜະໝາດ
ຜູ້ນັ້ນຍ່ອມເຮັດໂລກນີ້ໃຫ້ສະຫວ່າງສະໄຫວ[໔]
ຄືດວງຈັນພົ້ນຈາກກ້ອນເພື້ອ ສັນນັ້ນ[໕]

## ໖. ອັງຄຸລິມາລະເຖຣະວັດຖຸ
## ເລື້ອງພຣະອົງຄຸລິມານເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໗໓] ບາບກຳທີ່ເຮັດໄວ້ ຜູ້ໃດລະໄດ້ດ້ວຍກຸສົນ[໑]
ຜູ້ນັ້ນຍ່ອມເຮັດໂລກນີ້ໃຫ້ສະຫວ່າງສະໄຫວ
ຄືດວງຈັນພົ້ນຈາກກ້ອນເພື້ອ ສັນນັ້ນ

## ໗. ເປສະກາຣະທີຕາວັດຖຸ

## ເລື້ອງທິດານາຍຊ່າງຫູກ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ທິດາຂອງນາຍຊ່າງຫູກ ດັ່ງນີ້)

[໑໗໔] ໂລກນີ້ມືດມົນ[໒] ຄົນໃນໂລກນີ້ໜ້ອຍຄົນທີ່ຈັກເຫັນແຈ້ງ
ໜ້ອຍຄົນທີ່ຈັກໄປສະຫວັນ[໓]
ຄືນົກຕິດຕາໜ່າງ ໜ້ອຍໂຕທີ່ຈະພົ້ນຈາກຕາໜ່າງ ສັນນັ້ນ

# ໗. ຕິງສະພິກຂຸວັດຖຸ

## ເລື່ອງພິກຂຸ ໓໐ ອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະອານົນເຖຣະ ດັ່ງນີ້)

[໑໗໕] ຝູງຫົງບິນໄປທາງດວງອາທິດ[໔]ໄດ້
ທ່ານທີ່ຈະເລີນອິດທິບາດດີແລ້ວ ໄປທາງອາກາດດ້ວຍລິດໄດ້
ສ່ວນນັກປາດທັງຫຼາຍຊະນະມານພ້ອມທັງພາຫະນະໄດ້ແລ້ວ
ຍ່ອມອອກໄປຈາກໂລກໄດ້[໕]

# ໘. ຈິນຈະມານະວິກາວັດຖຸ

## ເລື່ອງນາງຈິນຈະມານະວິກາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໗໖] ບຸກຄົນຜູ້ລ່ວງລະເມີດທຳແນວໜຶ່ງ[໖]
ຜູ້ມັກກ່າວຕົວະ ປະຕິເສດປະຣະໂລກ
ຈະບໍ່ເຮັດບາບບໍ່ມີ

# ໑໐. ອະສະທິສະທານະວັດຖຸ

## ເລື່ອງອະສະທິສະທານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະເຈົ້າປະເສນທິໂກສົນແລະເຫຼົ່າອຳມາດ ດັ່ງນີ້)

[໑໗໗] ພວກຄົນຂີ້ຖີ່ໄປເທວະໂລກບໍ່ໄດ້ເລີຍ
ພວກຄົນພານບໍ່ສັນເສີນການໃຫ້ທານ
ສ່ວນນັກປາດອະນຸໂມທະນາການໃຫ້ທານ
ຍ້ອນເຫດນັ້ນແລ ເຂົາຈຶ່ງໄດ້ຮັບສຸກໃນປະຣະໂລກ

# ໑໑. ອະນາຖະປິນຖິກະປຸດຕະກາລະວັດຖຸ
## ເລື້ອງນາຍກາລະບຸດຂອງອະນາຖະບິນດິກະເສດຖີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ອະນາຖະບິນດິກະເສດຖີ ດັ່ງນີ້)

[໑໗໘] ໂສດາປັດຕິຜົນປະເສີດກວ່າຄວາມເປັນເອກກະລາດໃນແຜ່ນດິນ
ກວ່າການໄປສູ່ສະຫວັນ ຫຼືກວ່າຄວາມເປັນໃຫຍ່ໃນໂລກທັງປວງ໌

**ໂລກວັກທີ ໑໓ ຈົບ**

# ໑໔. ພຸດທະວັກ
## ໝວດວ່າດ້ວຍເລື້ອງພຣະພຸດທະເຈົ້າ
## ໑. ມາຣະທິຕາວັດຖຸ
## ເລື້ອງລູກສາວມານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ລູກສາວມານ ໓ ນາງ ຄື ນາງຕັນຫາ ນາງອໍຣະດີ ແລະນາງຣາຄາ ດັ່ງນີ້)

[໑໗໙] ກິເລດທີ່ພຣະພຸດທະເຈົ້າພຣະອົງໃດຊົງຊະນະແລ້ວ
ພຣະອົງຈະບໍ່ຊົງກັບປຣາໄຊອີກ
ກິເລດຈັກໜ້ອຍໜຶ່ງໃນໂລກບໍ່ຕິດຕາມພຣະອົງຜູ້ຊະນະໄດ້ແລ້ວ
ພວກທ່ານຈັກນຳພຣະພຸດທະເຈົ້າພຣະອົງນັ້ນ
ຜູ້ມີພຣະຍານຫາບ່ອນສຸດບໍ່ໄດ້ ຜູ້ບໍ່ມີຮ່ອງຮອຍ໌ໄປດ້ວຍຮ່ອງຮອຍອັນໃດນໍ
[໑໘໐] ຕັນຫາຄືຕາໜ່າງ ຊື່ວ່າ ວິສັດຕິກາ໌
ບໍ່ມີແກ່ພຣະພຸດທະເຈົ້າພຣະອົງໃດ ເພື່ອນຳໄປໃນພົບໃດ ໆ
ພວກທ່ານຈັກນຳພຣະພຸດທະເຈົ້າພຣະອົງນັ້ນ
ຜູ້ມີພຣະຍານຫາບ່ອນສຸດບໍ່ໄດ້ ຜູ້ບໍ່ມີຮ່ອງຮອຍ ໄປດ້ວຍຮ່ອງຮອຍອັນໃດນໍ

## ໒. ຍະມະກະປາຕິຫາຣິຍະວັດຖຸ
## ເລື້ອງຍະມະກະປາຕິຫານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ເທວະດາແລະມະນຸດທີ່ປະຕູສັງກັດສະນະຄອນ ດັ່ງນີ້)

[໑໘໑] ທ່ານຜູ້ເປັນປາດເຫຼົ່າໃດໃຝ່ໃຈໃນຊານ ຍິນດີໃນເນກຂຳມະ[໓]
ແມ່ນທວຍເທບກໍ່ຊື່ນຊົມທ່ານຜູ້ເປັນປາດເຫຼົ່ານັ້ນ
ຜູ້ມີສະຕິ ຕັດສະຣູ້ເອງໂດຍຖືກຕ້ອງ

## ໓. ເອຣະກະປັດຕະນາຄະຣາຊະວັດຖຸ

### ເລື້ອງພະຍານາກຊື່ເອຣະກະປັດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພະຍານາກຊື່ເອຣະກະປັດ ດັ່ງນີ້)

[໑໘໒] ການໄດ້ເກີດມາເປັນມະນຸດກໍ່ນັບວ່າຍາກ
ການດຳລົງຊີວິດຢູ່ຂອງເຫຼົ່າສັດກໍ່ນັບວ່າຍາກ
ການທີ່ຈະໄດ້ຟັງສັດທຳກໍ່ນັບວ່າຍາກ
ການທີ່ພຣະພຸດທະເຈົ້າທັງຫຼາຍຈະສະເດັດອຸບັດຂຶ້ນກໍ່ຍິ່ງຍາກ[໑]

## ໔. ອານັນທະເຖຣະປັນຫະວັດຖຸ

### ເລື້ອງບັນຫາຂອງພຣະອານົນເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະອານົນເຖຣະ ດັ່ງນີ້)

[໑໘໓] ການບໍ່ເຮັດບາບທັງປວງ
ການເຮັດກຸສົນໃຫ້ເຖິງພ້ອມ
ການເຮັດຈິດຂອງຕົນໃຫ້ຜ່ອງແຜ້ວ[໒]
ນີ້ຄື ຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ

[໑໘໔] ຄວາມອົດທົນຄືຄວາມອົດກັ້ນເປັນຕະບະຢ່າງຍິ່ງ
ພຣະພຸດທະເຈົ້າທັງຫຼາຍຕັດວ່າ ນິບພານເປັນບໍຣົມທຳ
ຜູ້ທຳຮ້າຍຜູ້ອື່ນ ບໍ່ຊື່ວ່າ ເປັນບັນພະຊິດ
ຜູ້ບຽດບຽນຜູ້ອື່ນ ບໍ່ຊື່ວ່າ ເປັນສະມະນະ

[໑໘໕] ການບໍ່ກ່າວຮ້າຍຜູ້ອື່ນ ການບໍ່ບຽດບຽນຜູ້ອື່ນ
ຄວາມສັງລວມໃນປາຕິໂມກ
ຄວາມເປັນຜູ້ຮູ້ຈັກປະມານໃນອາຫານ
ການຢູ່ໃນເສນາສະນະທີ່ສະງັດ

ການປະກອບຄວາມພຽນໃນອະທິຈິດ[໑]
ນີ້ຄື ຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ[໒]

## ໕. ອະນະພິຣະຕິພິກຂຸວັດຖຸ

### ເລື້ອງພິກຂຸຜູ້ບໍ່ຍິນດີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ບໍ່ຍິນດີປະພຶດພົມມະຈັນ ດັ່ງນີ້)

[໑໗໙] ຄວາມອີ່ມໃນກາມທັງຫຼາຍ
ມີບໍ່ໄດ້ດ້ວຍກະຫາປະນະທີ່ຫຼັ່ງມາຄືຫ່າຝົນ
ກາມທັງຫຼາຍມີສຸກໜ້ອຍ ມີທຸກຫຼາຍ

[໑໘໗] ບັນດິດຮູ້ແນວນີ້ແລ້ວ
ຍ່ອມບໍ່ຍິນດີໃນກາມທັງຫຼາຍແມ່ນທີ່ເປັນທິບ
ສາວົກຂອງພຣະສຳມາສຳພຸດທະເຈົ້າ
ເປັນຜູ້ຍິນດີໃນຄວາມສິ້ນຕັນຫາ

## ໙. ອັກຄິທັນຕະປຸໂລຫິດວັດຖຸ

### ເລື້ອງອັກຄິທັນຕະປຸໂລຫິດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ອັກຄິທັດຕະຜູ້ອອກບວດເປັນລືສີແລະບໍລິວານ ດັ່ງນີ້)

[໑໘໘] ມະນຸດຈຳນວນຫຼາຍ ຜູ້ຖືກໄພຄຸກຄາມ
ຕ່າງເຖິງພູ ປ່າໄມ້ ອາຣາມ ແລະຣຸກຂະເຈດີເປັນສະຣະນະ

[໑໘໙] ນັ້ນບໍ່ແມ່ນສະຣະນະອັນກະເສມ ນັ້ນບໍ່ແມ່ນສະຣະນະອັນສູງສຸດ
ຍ້ອນຜູ້ອາໄສສະຣະນະເຊັ່ນນັ້ນ ຍ່ອມບໍ່ພົ້ນຈາກທຸກທັງປວງ

[໑໙໐] ສ່ວນຜູ້ທີ່ເຖິງພຣະພຸດ ພຣະທຳ ແລະພຣະສົງ ເປັນສະຣະນະ
ຍ່ອມໃຊ້ປັນຍາຖືກພິຈາລະນາເຫັນອະຣິຍະສັດ ໔ ປະການ ຄື

[໑໙໑] ທຸກ ເຫດເກີດທຸກ ຄວາມດັບທຸກ
ແລະອະຣິຍະມັກມີອົງ ໘ ອັນເປັນຂໍ້ປະຕິບັດໃຫ້ເຖິງຄວາມສະງົບລະງັບທຸກ

[໑໙໔] ນັ້ນເປັນສະຣະນະອັນກະເສມ ນັ້ນເປັນສະຣະນະອັນສູງສຸດ
ຍ້ອນຜູ້ອາໄສສະຣະນະເຊັ່ນນັ້ນ
ຍ່ອມພົ້ນຈາກທຸກທັງປວງໄດ້໑

## ໗. ອານັນທະເຖຣະວັດຖຸ

### ເລື້ອງພຣະອານົນເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະອານົນເຖຣະ ດັ່ງນີ້)

[໑໙໓] ບຸຣຸດອາຊາໄນຫາໄດ້ຍາກ ຍ້ອນວ່າທ່ານບໍ່ເກີດໃນບ່ອນທົ່ວໄປ
ທ່ານເປັນນັກປາດ ໄປເກີດໃນຕະກູນໃດ
ຕະກູນນັ້ນຍ່ອມມີແຕ່ຄວາມສຸກ

## ໘. ສຳພະຫຸລະພິກຂຸວັດຖຸ

### ເລື້ອງພິກຂຸຫຼາຍອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸປະມານ ໕໐໐ ອົງ ດັ່ງນີ້)

[໑໙໔] ການເກີດຂຶ້ນຂອງພຣະພຸດທະເຈົ້າທັງຫຼາຍ ເປັນເຫດນຳສຸກມາໃຫ້
ການສະແດງສັດທຳ ເປັນເຫດນຳສຸກມາໃຫ້
ຄວາມສາມັກຄີຂອງໝູ່ ເປັນເຫດນຳສຸກມາໃຫ້
ຄວາມພຽນຂອງຄົນທີ່ສາມັກຄີກັນ ເປັນເຫດນຳສຸກມາໃຫ້

## ໙. ກັດສະປະທະສະພະລະສຸວັນນະເຈຕິຍະວັດຖຸ

### ເລື້ອງພຣະເຈດີຄຳຂອງພຣະກັດສະປະທົດສະພົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໑໙໕] ບຸນຂອງບຸກຄົນຜູ້ບູຊາທ່ານຜູ້ຄວນບູຊາ
ຄືພຣະພຸດທະເຈົ້າ ຫຼືພຣະສາວົກ
ຜູ້ກ້າວພົ້ນທຳເຄື່ອງລ້າຊ້າ໑
ຜູ້ຂ້າມຄວາມໂສກແລະຄວາມຮ່ຳໄຮໄດ້ແລ້ວ

[໑໙໖] ຜູ້ໝັ້ນຄົງ ຜູ້ດັບກິເລດໄດ້ແລ້ວ
ຜູ້ບໍ່ມີໄພແຕ່ຢູ່ໄສ
ໃຜ ໆ ບໍ່ອາດນັບໄດ້ວ່າ
ບຸນນີ້ມີປະມານທໍ່ນີ້

**ພຸດທະວັກທີ ໑໔ ຈົບ**

# ໑໕. ສຸຂະວັກ

## ໝວດວ່າດ້ວຍຄວາມສຸກ

## ໑. ຍາຕິກະລະຫະວູປະສະມະນະວັດຖຸ

### ເລື້ອງການລະງັບຄວາມຜິດຖຽງຂອງໝູ່ພຣະຍາດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະຍາດຝ່າຍສາກະຍະແລະໂກລິຍະ ທີ່ຜິດຖຽງກັນຍ້ອນຍາດນໍ້າເຮັດນາ ດັ່ງນີ້)

[໑໙໗] ໃນໝູ່ມະນຸດຜູ້ມີເວນ
ເຮົາເປັນຜູ້ບໍ່ມີເວນ ຢູ່ເປັນສຸກແທ້ນໍ
ໃນໝູ່ມະນຸດຜູ້ມີເວນ ເຮົາຢູ່ຢ່າງບໍ່ມີເວນ

[໑໙໘] ໃນໝູ່ມະນຸດຜູ້ເດືອດຮ້ອນ[໑]
ເຮົາເປັນຜູ້ບໍ່ເດືອດຮ້ອນ ຢູ່ເປັນສຸກແທ້ນໍ
ໃນໝູ່ມະນຸດຜູ້ເດືອດຮ້ອນ ເຮົາຢູ່ຢ່າງບໍ່ເດືອດຮ້ອນ

[໑໙໙] ໃນໝູ່ມະນຸດຜູ້ຂຶນຂວາຍ[໒]
ເຮົາເປັນຜູ້ບໍ່ຂຶນຂວາຍ ຢູ່ເປັນສຸກແທ້ນໍ
ໃນໝູ່ມະນຸດຜູ້ຂຶນຂວາຍ ເຮົາຢູ່ຢ່າງບໍ່ຂຶນຂວາຍ

## ໒. ມາຣະວັດຖຸ

### ເລື້ອງມານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ມານຜູ້ມີບາບ ດັ່ງນີ້)

[໒໐໐] ເຮົາບໍ່ມີກິເລດເຄື່ອງກັງວົນ ຍູ່ເປັນສຸກແທ້ນໍ
ເຮົາມີປີຕິເປັນພັກສາ
ຄືທວຍເທບຊັ້ນອາພັດສະຣະ ສັນນັ້ນ[໔]

## ໓. ໂກສະລະຣັນໂຍປະຣາຊະຍະວັດຖຸ

## ເລື້ອງຄວາມປຣາໄຊຂອງພຣະເຈົ້າໂກສົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໒໐໑] ຜູ້ຊະນະຍ່ອມກໍ່ເວນ ຜູ້ປຣາໄຊຍ່ອມນອນເປັນທຸກ
ຜູ້ລະທັງຄວາມຊະນະແລະຄວາມປຣາໄຊໄດ້ແລ້ວ
ມີໃຈສະງົບ ຍ່ອມນອນເປັນສຸກ[໑]

## ໔. ອັນຍະຕະຣະກຸນທາຣິກາວັດຖຸ

## ເລື້ອງສາວນ້ອຍໃນຕະກູນໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ສາມີຂອງສາວນ້ອຍໃນຕະກູນໜຶ່ງ ດັ່ງນີ້)

[໒໐໒] ໄຟສະເໝີດ້ວຍຣາຄະບໍ່ມີ
ໂທດສະເໝີດ້ວຍໂທສະບໍ່ມີ
ທຸກສະເໝີດ້ວຍປັນຈະຂັນບໍ່ມີ
ສຸກ (ອື່ນ)ຍິ່ງກວ່າຄວາມສະງົບ[໒]ບໍ່ມີ

## ໕. ອັນຍະຕະຣະອຸປາສະກະວັດຖຸ

## ເລື້ອງອຸປາສົກຄົນໃດຄົນໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໒໐໓] ຄວາມຫິວເປັນພະຍາດຢ່າງຍິ່ງ[໓]
ສັງຂານທັງຫຼາຍ[໔]ເປັນທຸກຢ່າງຍິ່ງ
ບັນດິດຮູ້ເລື້ອງນີ້ຕາມຄວາມເປັນຈິງແລ້ວ
ຍ່ອມເຮັດນິບພານໃຫ້ແຈ້ງ
ຍ້ອນນິບພານເປັນສຸກຢ່າງຍິ່ງ

# ຜ. ປະເສນທິໂກສະລະວັດຖຸ

## ເລື້ອງພຣະເຈົ້າປະເສນທິໂກສົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະເຈົ້າປະເສນທິໂກສົນ ດັ່ງນີ້)

[໘໐໔] ຄວາມບໍ່ມີພະຍາດເປັນລາບຢ່າງຍິ່ງ
ຄວາມສັນໂດດເປັນຊັບຢ່າງຍິ່ງ
ຄວາມຄຸ້ນເຄີຍເປັນຍາດຢ່າງຍິ່ງ
ນິບພານເປັນສຸກຢ່າງຍິ່ງ

# ກ. ຕິດສະເຖຣະວັດຖຸ

## ເລື້ອງພຣະຕິດສະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະຕິດສະເຖຣະ ດັ່ງນີ້)

[໘໐໕] ບຸກຄົນດື່ມປະວິເວກຣົດ[໑]
ຊີມຣົດແຫ່ງຄວາມສະງົບ[໒]
ແລະໄດ້ຊີມຣົດແຫ່ງປີຕິໃນທຳແລ້ວ
ເປັນຜູ້ບໍ່ມີຄວາມກະວົນກະວາຍ ບໍ່ມີບາບ[໓]

# ຕ. ສັກກະວັດຖຸ

## ເລື້ອງທ້າວສັກກະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໘໐໖] ການພົບເຫັນພຣະອະຣິຍະທັງຫຼາຍ ເປັນການດີ
ການຢູ່ຮ່ວມກັບພຣະອະຣິຍະ ກໍ່ໃຫ້ເກີດສຸກທຸກເມື່ອ
ຍ້ອນການບໍ່ພົບພໍ້ຄົນພານ ບຸກຄົນຈຶ່ງຢູ່ເປັນສຸກເນືອງນິດ

[໘໐໗] ຍ້ອນຜູ້ຄົບຄ້າສະມາຄົມກັບຄົນພານ
ຍ່ອມເສົ້າໂສກສິ້ນການລະນານ
ການຢູ່ຮ່ວມກັບຄົນພານ ເປັນທຸກຕະຫຼອດເວລາ

ຄືຢູ່ຮ່ວມກັບສັດຕູ
ການຢູ່ຮ່ວມກັບນັກປາດມີແຕ່ຄວາມສຸກ
ຄືຢູ່ໃນໝູ່ຍາດ

[໔໐໗] ຍ້ອນແນວນັ້ນແລ ບຸກຄົນຄວນຄົບຜູ້ເປັນປາດ
ມີປັນຍາ ເປັນພະຫູສູດ
ມີປົກກະຕິເອົາທຸຣະ ມີຂໍ້ວັດປະຕິບັດ[໑] ເປັນພຣະອະຣິຍະ
ເປັນສັດຕະບຸຣຸດ ມີປັນຍາດີ ເຊັ່ນນັ້ນ
ຄືດວງຈັນໂຄຈອນໄປຕາມທາງຂອງດາວເລີກ ສັນນັ້ນ

**ສຸຂະວັກທີ ໑໕ ຈົບ**

# ໑໖. ປິຍະວັກ

## ໝວດວ່າດ້ວຍສິ່ງເປັນທີ່ຮັກ

## ໑. ຕະໂຍຊະນະປັບພະຊິຕະວັດຖຸ

### ເລື້ອງບັນພະຊິດ ໓ ອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ບັນພະຊິດ ໓ ອົງ ດັ່ງນີ້)

[໔໐໙] ບຸກຄົນເຮັດໂຕໃຫ້ໝົກມຸ້ນໃນກິດທີ່ບໍ່ຄວນໝົກມຸ້ນ[໒]
ແລະບໍ່ໝົກມຸ້ນໃນກິດທີ່ຄວນໝົກມຸ້ນ
ລະເລີຍສິ່ງທີ່ເປັນປະໂຫຍດ[໓] ຕິດຢູ່ໃນປິຍາຣົມ[໔]
ທະເຍີທະຍານນຳບຸກຄົນຜູ້ປະຕິບັດຕົນດີ

[໔໑໐] ບໍ່ວ່າເວລາໃດ ບຸກຄົນບໍ່ຄວນຕິດພັນກັບສິ່ງເປັນທີ່ຮັກແລະບໍ່ເປັນທີ່ຮັກ
ຍ້ອນການບໍ່ເຫັນສິ່ງເປັນທີ່ຮັກເປັນທຸກ
ການພົບເຫັນສິ່ງບໍ່ເປັນທີ່ຮັກ ກໍເປັນທຸກ

[໔໑໑] ຍ້ອນແນວນັ້ນ ບຸກຄົນບໍ່ຄວນເຮັດສິ່ງໃດ ໆ ໃຫ້ເປັນທີ່ຮັກ
ຍ້ອນການພັດພາກຈາກສິ່ງເປັນທີ່ຮັກ ເປັນທຸກຣະທົມ
ຜູ້ທີ່ບໍ່ມີສິ່ງເປັນທີ່ຮັກແລະບໍ່ເປັນທີ່ຮັກ
ຍ່ອມບໍ່ມີກິເລດເຄື່ອງຮ້ອຍຮັດ

## ໒. ອັນຍະຕະຣະກຸຕຸມພິກະວັດຖຸ
## ເລື້ອງກຸດຸມພີຄົນໃດຄົນໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ກຸດຸມພີ ດັ່ງນີ້)

[໒໑໒] ຄວາມໂສກເກີດຈາກສິ່ງເປັນທີ່ຮັກ ໄພກໍເກີດຈາກສິ່ງເປັນທີ່ຮັກ
ຜູ້ພົ້ນຈາກສິ່ງເປັນທີ່ຮັກໄດ້ເດັດຂາດ
ຍ່ອມບໍ່ມີຄວາມໂສກແລະໄພຈາກບ່ອນໃດເລີຍ

## ໓. ວິສາຂາວັດຖຸ
## ເລື້ອງນາງວິສາຂາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ນາງວິສາຂາມິຄາຣະມາຕາຜູ້ເສົ້າໂສກຍ້ອນຫຼານສາວ ຊື່ສຸທັດຕີເສຍຊີວິດ ດັ່ງນີ້)

[໒໑໓] ຄວາມໂສກເກີດຈາກຄວາມຮັກ ໄພກໍເກີດຈາກຄວາມຮັກ
ຜູ້ພົ້ນຈາກຄວາມຮັກໄດ້ເດັດຂາດ
ຍ່ອມບໍ່ມີຄວາມໂສກແລະໄພຈາກບ່ອນໃດເລີຍ

## ໔. ລິດສະຫວີວັດຖຸ

## ເລື້ອງເຈົ້າລິດສະຫວີ

(ພຣະຜູ້ມີພຣະພາກເຈົ້າຊົງຜາຣົບພວກເຈົ້າລິດສະຫວີທີ່ຍາດຍິງຜູ້ງົດງາມໃນເມືອງຈົນເຖິງຂັ້ນຕ່ອຍຕີກັນ ຈຶ່ງຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໒໑໔] ຄວາມໂສກເກີດຈາກຄວາມຍິນດີ໑ ໄພກໍເກີດຈາກຄວາມຍິນດີ
ຜູ້ພົ້ນຈາກຄວາມຍິນດີໄດ້ເດັດຂາດ
ຍ່ອມບໍ່ມີຄວາມໂສກແລະໄພຈາກບ່ອນໃດເລີຍ

## ໕. ອະນິດຖີຄັນທະກຸມາຣະວັດຖຸ

## ເລື້ອງອະນິດຖີຄັນທະກຸມານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ອະນິດຖີຄັນທະກຸມານ ດັ່ງນີ້)

[໔໑໕] ຄວາມໂສກເກີດຈາກກາມ[໒] ໄພກໍເກີດຈາກກາມ
ຜູ້ພົ້ນຈາກກາມໄດ້ເດັດຂາດ
ຍ່ອມບໍ່ມີຄວາມໂສກແລະໄພຈາກບ່ອນໃດເລີຍ

## ໖. ອັນຍະຕະຣະພາມມະນະວັດຖຸ

### ເລື້ອງພາມຄົນໃດຄົນໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພາມ ດັ່ງນີ້)

[໔໑໖] ຄວາມໂສກເກີດຈາກຕັນຫາ ໄພກໍເກີດຈາກຕັນຫາ
ຜູ້ພົ້ນຈາກຕັນຫາໄດ້ເດັດຂາດ
ຍ່ອມບໍ່ມີຄວາມໂສກແລະໄພຈາກບ່ອນໃດເລີຍ

## ໗. ປັນຈະສະຕະທາຣະກະວັດຖຸ

### ເລື້ອງເດັກນ້ອຍ ໕໐໐ ຄົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ເດັກນ້ອຍ ໕໐໐ ຄົນ ດັ່ງນີ້)

[໔໑໗] ບຸກຄົນຜູ້ສົມບູນດ້ວຍສີນ[໑]ແລະທັດສະນະ[໒]
ດຳລົງຢູ່ໃນທຳ[໓] ກ່າວຄຳສັດ[໔]
ເຮັດໜ້າທີ່ຂອງຕົນ[໕]
ຍ່ອມເປັນທີ່ຮັກຂອງປະຊາຊົນ

## ໘. ອະນາຄາມີເຖຣະວັດຖຸ

### ເລື້ອງພຣະອະນາຄາມີເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍຜູ້ເປັນສິດຂອງພຣະຜູ້ບັນລຸ ອະນາຄາມີຜົນ ດັ່ງນີ້)

[໔໑໘] ພິກຂຸຜູ້ເກີດສັນທະໃນທຳ[໖] ທີ່ໃຜ ໆ ບອກບໍ່ໄດ້
ມີໃຈໄດ້ສຳຜັດແລ້ວ[໗]ແລະມີຈິດບໍ່ເກາະກ່ຽວໃນກາມທັງຫຼາຍ[໘]
ເຮົາຮຽກວ່າ ຜູ້ມີກະແສໃນເບື້ອງເທິງ[໙]

# ໙. ນັນທິຍະວັດຖຸ

## ເລື້ອງນາຍນັນທິຍະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະມະຫາໂມກຄັນລານະຜູ້ເຫັນທິບພະຍະສົມບັດ ຂອງ ນາຍນັນທິຍະໃນເທວະໂລກ ດັ່ງນີ້)

[໔໑໙] ຍາດ ມິດ ແລະຜູ້ມີໃຈດີທັງຫຼາຍ
ເຫັນຄົນທີ່ຈາກເຮືອນໄປດົນ
ກັບຈາກບ່ອນໄກມາເຖິງໂດຍປອດໄພ
ຍ່ອມຍິນດີວ່າມາແລ້ວ

[໔໒໐] ເຊັ່ນດຽວກັນນັ້ນ ບຸນທັງຫຼາຍ
ຍ່ອມຕ້ອນຮັບຄົນທີ່ເຮັດບຸນໄວ້
ເຊິ່ງຈາກໂລກນີ້ໄປສູ່ໂລກໜ້າ
ຄືຍາດຕ້ອນຮັບຍາດຜູ້ເປັນທີ່ຮັກທີ່ກັບມາເຮືອນ ສັນນັ້ນ

**ປິຍະວັគທີ ໑໖ ຈົບ**

# ໑໗. ໂກທະວັກ

## ໝວດວ່າດ້ວຍຄວາມໂກດ

# ໑. ໂຣຫິນີຂັດຕິຍະກັນຍາວັດຖຸ

## ເລື້ອງເຈົ້າຍິງໂຣຫິນີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ເຈົ້າຍິງໂຣຫິນີ ດັ່ງນີ້)

[໔໒໑] ບຸກຄົນຄວນລະຄວາມໂກດ ສະລະມານະ
ກ້າວລ່ວງສັງໂຍດໄດ້ໝົດທຸກຢ່າງ
ຄວາມທຸກຍ່ອມບໍ່ກຸ້ມຣຸມຄົນນັ້ນຜູ້ບໍ່ຕິດຢູ່ໃນນາມຣູບ
ຜູ້ບໍ່ມີກິເລດເຄື່ອງກັງວົນ[១]

# ໒. ອັນຍະຕະຣະພິກຂຸວັດຖຸ

## ເລື້ອງພິກຂຸອົງໃດອົງໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ເທວະດາ ດັ່ງນີ້)

[໒໒໒] ຜູ້ໃດອົດກັ້ນຄວາມໂກດທີ່ເກີດຂື້ນໄວ້ໄດ້
ຄືນາຍສາຣະຖີຢຸດລົດທີ່ກຳລັງແລ່ນຢູ່ໄດ້
ເຮົາຮຽກຜູ້ນັ້ນວ່າ ນາຍສາຣະຖີ
ຄົນນອກຈາກນີ້ ເປັນພຽງຜູ້ຖືເຊືອກທ່ນັ້ນ

# ໓. ອຸດຕະຣາອຸປາຊິກາວັດຖຸ

## ເລື້ອງນາງອຸດຕະຣາອຸປາສິກາ

(ພຣະຜູ້ມີພຣະພາກເຈົ້າຊົງຊົມເຊີຍນາງອຸດຕະຣາທີ່ອົດກັ້ນຄວາມໂກດຕໍ່ນາງສິຣິມາ ຈຶ່ງຕັດພຣະຄາຖານີ້ແກ່ນາງອຸດຕະຣາ ດັ່ງນີ້)

[໒໒໓] ບຸກຄົນເພິ່ງຊະນະຄົນໂກດດ້ວຍຄວາມບໍ່ໂກດ
ເພິ່ງຊະນະຄົນບໍ່ດີດ້ວຍຄວາມດີ
ເພິ່ງຊະນະຄົນຂີ້ຖີ່ດ້ວຍການໃຫ້
ເພິ່ງຊະນະຄົນເວົ້າເຫຼາະແຫຼະດ້ວຍຄຳສັດ[໑]

# ໔. ມະຫາໂມກຄັນລານະເຖຣະປັນຫະວັດຖຸ

## ເລື້ອງປັນຫາຂອງພຣະມະຫາໂມກຄັນລານະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະມະຫາໂມກຄັນລານະເຖຣະ ດັ່ງນີ້)

[໒໒໔] ບຸກຄົນຄວນເວົ້າຄຳຈິງ ບໍ່ຄວນໂກດ
ແມ່ນເຂົາຂໍພຽງເລັກໜ້ອຍກໍຄວນໃຫ້[໒]
ດ້ວຍເຫດ ໓ ຢ່າງນີ້ (ແນວໃດແນວໜຶ່ງ) ບຸກຄົນເພິ່ງໄປເທວະໂລກໄດ້

# ໕. ພິກຂູທີປຸດຖະປັນທະວັດຖຸ

## ເລື້ອງບັນຫາທີ່ພິກຂຸທູນຖາມ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໔໕] ມຸນີ[໑]ຜູ້ບໍ່ບຽດບຽນ ສັງລວມກາຍຢູ່ປະຈຳ[໒]
ຍ່ອມໄປສູ່ທີ່ທີ່ບໍ່ຈຸຕິທີ່ໄປແລ້ວບໍ່ເສົ້າໂສກ

# ໖. ປຸນນະທາສີວັດຖຸ

## ເລື້ອງນາງປຸນນະທາສີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ນາງຂ້າທາດຂອງເສດຖີຊາວນະຄອນຣາດຊະຄຶ ຊື່ປຸນນາ ດັ່ງນີ້)

[໔໔໖] ສຳລັບບຸກຄົນຜູ້ຕື່ນຢູ່ຕະຫຼອດເວລາ
ໝັ່ນສຶກສາໄຕຣສິກຂາທັງກາງເວັນແລະກາງຄືນ
ນ້ອມຈິດເຂົ້າຫານິບພານ
ອາສະວະທັງຫຼາຍ[໓]ຍ່ອມຕັ້ງຢູ່ບໍ່ໄດ້

# ໗. ອະຕຸລະອຸປາສະກະວັດຖຸ

## ເລື້ອງອະຕຸລະອຸປາສິກ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ອະຕຸລະອຸປາສິກພ້ອມບໍລິວານ ໕໐໐ ຄົນ ດັ່ງນີ້)

[໔໔໗] ອະຕຸລະເອີຍ ການນິນທາແລະສັນເສີນນີ້ມີມາດົນແລ້ວ
ບໍ່ແມ່ນຫາກໍມີໃນມື້ນີ້ທີ່ນັ້ນ
ຄົນນັ່ງຢູ່ຊື່ ໆ ເຂົາກໍນິນທາ
ຄົນເວົ້າຫຼາຍ ເຂົາກໍນິນທາ
ແມ່ນຄົນເວົ້າໜ້ອຍ ເຂົາກໍນິນທາ
ບໍ່ມີໃຜເລີຍໃນໂລກນີ້ບໍ່ຖືກນິນທາ

[໔໔໘] ທັງໃນອະດີດ ໃນອະນາຄົດ ແລະໃນປັດຈຸບັນ

ກໍບໍ່ມີໃຜເລີຍທີ່ຈະຖືກນິນທາຢ່າງດຽວ
ຫຼືໄດ້ຮັບການສັນເສີນຢ່າງດຽວ

[໒໒໙] ແຕ່ວິນຍູຊົນພິຈາລະນາທຸກມື້ ໆ
ຍ່ອມສັນເສີນບຸກຄົນຜູ້ດຳເນີນຊີວິດຫາຂໍ້ຕຳໜິບໍ່ໄດ້
ຜູ້ເປັນນັກປາດ ຜູ້ມີປັນຍາແລະສິນໝັ້ນຄົງ[១]

[໒໓໐] ໃຜນໍຈະຄວນຕຳໜິຜູ້ນັ້ນ
ຜູ້ປຽບຄືແທ່ງຄຳຊົມພູນຸດ
ຜູ້ເຊັ່ນນັ້ນ ແມ່ນເທວະດາແລະມະນຸດກໍຊື່ນຊົມ
ເຖິງພົມກໍສັນເສີນ

## ໗. ສັບພັກຄີຍະພິກຂຸວັດຖຸ

### ເລື້ອງພຣະສັບພັກຄີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະສັບພັກຄີ ດັ່ງນີ້)

[໒໓໑] ບຸກຄົນເພິ່ງຮັກສາຄວາມກຳເຣີບທາງກາຍ
ເພິ່ງສັງລວມກາຍ ລະກາຍທຸດຈະຣິດແລ້ວ
ເພິ່ງປະພຶດກາຍສຸດຈະຣິດ

[໒໓໒] ບຸກຄົນເພິ່ງຮັກສາຄວາມກຳເຣີບທາງວາຈາ
ເພິ່ງສັງລວມວາຈາ ລະວະຈີທຸດຈະຣິດແລ້ວ
ເພິ່ງປະພຶດວະຈີສຸດຈະຣິດ

[໒໓໓] ບຸກຄົນເພິ່ງຮັກສາຄວາມກຳເຣີບທາງໃຈ
ເພິ່ງສັງລວມໃຈ ລະມະໂນທຸດຈະຣິດແລ້ວ
ເພິ່ງປະພຶດມະໂນສຸດຈະຣິດ

[໒໓໔] ນັກປາດຜູ້ສັງລວມກາຍ ສັງລວມວາຈາ ສັງລວມໃຈ
ຊື່ວ່າເປັນຜູ້ສັງລວມດີແທ້

**ໂກດທະວັກທີ ໑໗ ຈົບ**

# ໑໘. ມະລະວັກ

## ໝວດວ່າດ້ວຍມົນທິນທາງໃຈ

## ໑. ໂຄຄາຕະກະປຸດຕະວັດຖຸ

### ເລື້ອງບຸດຂອງຄົນຂ້າງົວ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ບຸດຂອງຄົນຂ້າງົວຜູ້ແກ່ເຖົ້າ ດັ່ງນີ້)

[໒໓໕] ບັດນີ້ ທ່ານປຽບຄືໃບໄມ້ເຫຼືອງ
ທັງຍົມມະທູດ[໑]ມາຜາກົດແກ່ທ່ານແລ້ວ
ທ່ານຢູ່ໃກ້ປາກແຫ່ງຄວາມເສື່ອມ
ແລະແມ່ນແຕ່ສະບຽງເດີນທາງ[໒]ຂອງທ່ານກໍຍັງບໍ່ມີເລີຍ

[໒໓໖] ທ່ານນັ້ນຈົ່ງເຮັດທີ່ເພິ່ງ[໑]ແກ່ຕົນເອງ
ຈົ່ງຟ້າວພະຍາຍາມ ຈົ່ງເປັນບັນດິດ
ທ່ານກໍາຈັດມົນທິນໄດ້ແລ້ວ ບໍ່ມີກິເລດພຽງດັ່ງເນີນ
ຈະເຂົ້າເຖິງອະຣິຍະພູມອັນເປັນທິບ[໒]

[໒໓໗] ບັດນີ້ ທ່ານເປັນຜູ້ມີໄວຖືກນໍາເຂົ້າໄປແລ້ວ[໓]
ກຽມຈະໄປສໍານັກພຣະຍາຍົມ
ທີ່ພັກລະຫວ່າງທາງຂອງທ່ານຍັງບໍ່ມີ
ແລະແມ່ນແຕ່ສະບຽງເດີນທາງຂອງທ່ານກໍຍັງບໍ່ມີເລີຍ

[໒໓໘] ທ່ານນັ້ນຈົ່ງເຮັດທີ່ເພິ່ງແກ່ຕົນເອງ
ຈົ່ງຟ້າວພະຍາຍາມ ຈົ່ງເປັນບັນດິດ
ທ່ານກໍາຈັດມົນທິນໄດ້ແລ້ວ ບໍ່ມີກິເລດພຽງດັ່ງເນີນ
ກໍຈະບໍ່ຕ້ອງເຂົ້າເຖິງຊາດ ແລະຊະຣາອີກຕໍ່ໄປ

## ໒. ອັນຍະຕະຣະພາມມະນະວັດຖຸ

### ເລື້ອງພາມຄົນໃດຄົນໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພາມຜູ້ເຮັດກຸສົນຢູ່ປະຈໍາ ໆ ດັ່ງນີ້)

[໘໓໙] ຜູ້ມີປັນຍາ ເພິ່ງກຳຈັດມົນທິນ໒ຂອງຕົນ
ເທື່ອລະໜ້ອຍ ທຸກຂະນະ ໂດຍລຳດັບ
ຄືຊ່າງຄຳກຳຈັດຂີ້ມ້ຽງຄຳ ສັນນັ້ນ໒

## ໙. ຕິດສະເຖຣະວັດຖຸ

### ເລື້ອງພຣະຕິດສະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໘໔໐] ຂີ້ມ້ຽງເກີດຂຶ້ນຈາກເຫຼັກ
ເມື່ອເກີດຂຶ້ນແລ້ວ ຍ່ອມກັດເຫຼັກນັ້ນເອງ ສັນໃດ
ກຳທັງຫຼາຍຂອງຕົນ ຍ່ອມນຳຄົນຜູ້ປະພຶດລ່ວງໂທນາ໑
ໄປສູ່ທຸກຄະຕິ ສັນນັ້ນ

## ໘. ໂລລຸທາຍີວັດຖຸ

### ເລື້ອງພຣະໂລລຸທາຍີ

(ພຣະຜູ້ມີພຣະພາກເຈົ້າຊົງຜາຣົບພຣະໂລລຸທາຍີຜູ້ຮ່ຳຮຽນທຳພຽງເລັກໜ້ອຍແລະບໍ່ທ່ອງຈົ່ມ ຈຶ່ງຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໘໔໑] ມົນ໒ມີການບໍ່ທ່ອງຈົ່ມເປັນມົນທິນ
ເຮືອນມີຄວາມບໍ່ດຸໝັ່ນຂະຫຍັນພຽນ໓ເປັນມົນທິນ
ຜິວພັນມີຄວາມຂີ້ຄ້ານ໔ ເປັນມົນທິນ
ຜູ້ຮັກສາ ມີຄວາມຜະໝາດ໕ ເປັນມົນທິນ

## ໕. ອັນຍະຕະຣະກຸລະປຸດຕະວັດຖຸ

### ເລື້ອງກຸນລະບຸດຄົນໃດຄົນໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ກຸນລະບຸດຄົນໜຶ່ງເຊິ່ງມີພັນລະຍາມັກນອກໃຈ ດັ່ງນີ້)

[໘໔໘] ສະຕີມີຄວາມປະພຶດຊົ່ວ໑ເປັນມົນທິນ

ຜູ້ໃຫ້ມີຄວາມຂີ້ຖີ່ເປັນມົນທິນ
ບາບທຳ໌ເປັນມົນທິນທັງໃນໂລກນີ້ແລະໂລກໜ້າ

[໘໔໓] ມົນທິນທີ່ຍິ່ງກວ່າມົນທິນນັ້ນຄືອະວິດຊາ[๑]
ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງລະມົນທິນນັ້ນໃຫ້ໄດ້
ແລ້ວເປັນຢູ່ຄືຜູ້ປາສະຈາກມົນທິນເທີ້ນ

# ໖. ຈູລະສາຣີພິກຂຸວັດຖຸ

## ເລື້ອງຈູລະສາຣີພິກຂຸ

(ພຣະຜູ້ມີພຣະພາກເຈົ້າຊົງຕຳໜິພຣະຈູລະສາຣີຜູ້ເປັນໝໍປຸງຢາໃຫ້ຊາວບ້ານເພື່ອແລກກັບ ໂພຊະນະ ຈຶ່ງຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໘໔໔] ຜູ້ບໍ່ມີຄວາມລະອາຍ ກ້າຄືກາ
ມັກທຳລາຍຄົນອື່ນ ມັກເອົາໜ້າ
ມີຄວາມຄະນອງ ມີພຶດຕິກຳສົກກະປົກ ເປັນຢູ່ສະບາຍ

[໘໔໕] ສ່ວນຜູ້ມີຄວາມລະອາຍ
ສະແຫວງຫາຄວາມບໍລິສຸດຢູ່ປະຈຳ
ບໍ່ຂີ້ຄ້ານ ບໍ່ມີຄວາມຄະນອງ
ມີອາຊີບບໍລິສຸດ ແລະມີປັນຍາ ເປັນຢູ່ລຳບາກ

# ໗. ປັນຈະອຸປາສະກະວັດຖຸ

## ເລື້ອງອຸປາສົກ ໕ ຄົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ອຸປາສົກ ໕ ຄົນ ດັ່ງນີ້)

[໘໔໖] ນໍຣະຊົນໃດໃນໂລກ ຂ້າສັດ ລັກຊັບ
ຄົບຊູ້ກັບພັນລະຍາຂອງຜູ້ອື່ນ ເວົ້າຕົວະ

[໘໔໗] ແລະໝົກມຸ້ນໃນການດື່ມສຸຣາແລະເມໄຣ[๒]
ນໍຣະຊົນນັ້ນຊື່ວ່າ ຂຸດຊັບອັນເປັນຕົ້ນທຸນ໌ຂອງຕົນໃນໂລກນີ້

[໘໔໘] ທ່ານຜູ້ຈະເລີນ ຂໍທ່ານຈົ່ງຮູ້ແນວນີ້ວ່າ

ຜູ້ມີບາບທຳທັງຫຼາຍ ມັກບໍ່ສັງລວມ
ຂໍໂລພະແລະອະທຳ[๖] ຢ່າຍ່ຳຍີທ່ານໃຫ້ເປັນທຸກຕະຫຼອດການລະນານເລີຍ

## ໘. ຕິດສະທະທະຣະວັດຖຸ

### ເລື້ອງພິກຂຸໜຸ່ມຊື່ຕິດສະ

(ພຣະຜູ້ມີພຣະພາກເຈົ້າຊົງຜາຣົບພຣະຕິດສະທ່ຽວຕິຽນທານຂອງຄົນອື່ນ ຈຶ່ງຕັດພຣະຄາຖານີ້
ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໔໙] ບຸກຄົນຍ່ອມໃຫ້ທານຕາມຄວາມເຊື່ອຕາມຄວາມເຫຼື້ອມໃສ
ພິກຂຸບໍ່ພໍໃຈໃນເຂົ້າແລະນ້ຳທີ່ເປັນທານຂອງຄົນອື່ນນັ້ນ
ຍ່ອມບໍ່ບັນລຸສະມາທິ[໗]ໃນເວລາກາງເວັນຫຼືກາງຄືນ

[໔໕໐] ສ່ວນພິກຂຸຜູ້ຕັດອະກຸສົນຈິດນີ້ໄດ້
ຖອນຂຶ້ນເຮັດໃຫ້ຮາກຂາດແລ້ວ
ຍ່ອມບັນລຸສະມາທິໃນເວລາກາງເວັນຫຼືກາງຄືນ

## ໙. ປັນຈະອຸປາສະກະວັດຖຸ

### ເລື້ອງອຸປາສິກາ ໕ ຄົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ອຸປາສິກາຄົນໜຶ່ງ ໃນຈຳນວນ ໕ ຄົນ ດັ່ງນີ້)

[໔໕໑] ໄຟສະເໝີດ້ວຍຣາຄະບໍ່ມີ
ຜູ້ຈັບສະເໝີດ້ວຍໂທສະບໍ່ມີ
ຕາໜ່າງສະເໝີດ້ວຍໂມຫະບໍ່ມີ
ແມ່ນ້ຳສະເໝີດ້ວຍຕັນຫາບໍ່ມີ[໘]

## ໑໐. ເມນທະກະເສດຖີວັດຖຸ

### ເລື້ອງເມນທະກະເສດຖີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ເມນທະກະເສດຖີ ດັ່ງນີ້)

[໔໕໔] ໂທດ[໙]ຂອງຄົນອື່ນເຫັນໄດ້ງ່າຍ

ສ່ວນໂທດຂອງຕົນເຫັນໄດ້ຍາກ
ຍ້ອນຄົນນັ້ນມັກໂຮຍໂທດຂອງຜູ້ອື່ນ
ຄືຄົນໂຮຍແກບ
ແຕ່ກັບປົກປິດໂທດຂອງຕົນໄວ້
ຄືພານນົກປົກປິດຮ່າງເຊື່ອງກາຍຕົນໄວ້ ສັນນັ້ນ

## ໑໑. ອຸດຊານະສັນຍີເຖຣະວັດຖຸ

### ເລື້ອງພຣະອຸດຊານະສັນຍີເຖຣະ

(ພຣະຜູ້ມີພຣະພາກເຈົ້າຊົງຜາຣົບພຣະອຸດຊານະສັນຍີຜູ້ຫ່ຽວຈັບຜິດພິກຂຸ ຈຶ່ງຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໘໕໓] ຜູ້ທີ່ຖ້າແຕ່ສອດສ່າຍຫາໂທດຄົນອື່ນ
ຖ້າເພ່ງໂທດຢູ່ເນືອງນິດ
ຈະມີອາສະວະພອກພູນຍິ່ງຂຶ້ນ
ແລະຫ່າງໄກຈາກຄວາມສິ້ນອາສະວະໂດຍແທ້

## ໑໘. ສຸພັດທະປະຣິພາຊະກະວັດຖຸ

### ເລື້ອງສຸພັດທະປະຣິພາຊົກ

(ພຣະຜູ້ມີພຣະພາກເຈົ້າຕັດຕອບບັນຫາຂອງສຸພັດທະປະຣິພາຊົກ ດັ່ງນີ້)

[໘໕໔] ບໍ່ມີຮອຍຕີນໃນອາກາດ ບໍ່ມີສະມະນະພາຍນອກ[໑]
ໝູ່ສັດເປັນຜູ້ຍິນດີໃນປະປັນຈະທຳ[໒]
ແຕ່ພຣະຕະຖາຄົດທັງຫຼາຍ ບໍ່ມີປະປັນຈະທຳ

[໘໕໕] ບໍ່ມີຮອຍຕີນໃນອາກາດ ບໍ່ມີສະມະນະພາຍນອກ
ບໍ່ມີສັງຂານ[໓]ທີ່ທ່ຽງແທ້
ພຣະພຸດທະເຈົ້າທັງຫຼາຍບໍ່ມີຄວາມຫວັ່ນໄຫວ

**ມະລະວັກທີ ໑໘ ຈົບ**

# ๑໙. ທຳມັດຖະວັກ

## ໝວດວ່າດ້ວຍຜູ້ຕັ້ງຢູ່ໃນທຳ

## ๑. ວິນິດສະຍະມະຫາມັດຕະວັດຖຸ

### ເລື້ອງມະຫາອຳມາດຜູ້ພິພາກສາ

(ພິກຂຸທັງຫຼາຍເຫັນມະຫາອຳມາດຜູ້ພິພາກສາຮັບສິນບົນແລ້ວຕັດສິນຄະດີ ຈຶ່ງຂາບທູນ ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຮູ້ ພຣະອົງຕັດພຣະຄາຖາ ດັ່ງນີ້)

[໘໕໖] ຜູ້ທີ່ຕັດສິນຄະດີໂດຍຮີບຟ້າວ[1]
ບໍ່ຊື່ວ່າ ຜູ້ຕັ້ງຢູ່ໃນທຳ
ສ່ວນຜູ້ໃດເປັນບັນດິດ ວິນິດໄສຄະດີ
ເຫດແຫ່ງຄະດີທັງທີ່ເປັນຈິງແລະບໍ່ເປັນຈິງທັງສອງ

[໘໕໗] ພິພາກສາຜູ້ອື່ນໂດຍບໍ່ຮີບຟ້າວ
ໂດຍທີ່ຍຸດຕິທຳ ໂດຍສະໝ່ຳສະເໝີ
ຜູ້ມີປັນຍາ ມີທຳຄຸ້ມຄອງນັ້ນ
ເຮົາຮຽກວ່າ ຜູ້ຕັ້ງຢູ່ໃນທຳ

## ๘. ສັບພັກຄິຍະວັດຖຸ

### ເລື້ອງພຣະສັບພັກຄີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໘໕໘] ບຸກຄົນບໍ່ຊື່ວ່າເປັນບັນດິດພຽງຍ້ອນເວົ້າຫຼາຍ
ແຕ່ຜູ້ມີຄວາມກະເສມ ບໍ່ມີເວນ ບໍ່ມີໄພ ຈຶ່ງຈະຊື່ວ່າ ເປັນບັນດິດ

## ๓. ເອກຸທານະຂີນາສະວະວັດຖຸ

### ເລື້ອງພຣະເອກຸທານຂີນາສົບ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ຊົງພຣະໄຕຣປິດົກ ๘ ອົງ ດັ່ງນີ້)

[໔໕໙] ບຸກຄົນບໍ່ຊື່ວ່າຜູ້ຊົງທຳພຽງຍ້ອນເວົ້າຫຼາຍ
ສ່ວນຜູ້ໃດໄດ້ສະດັບຮັບຟັງທຳໜ້ອຍ
ແຕ່ພິຈາລະນາເຫັນທຳດ້ວຍນາມກາຍ
ທັງບໍ່ຜະໝາດທຳນັ້ນ
ຜູ້ນັ້ນຊື່ວ່າ ຜູ້ຊົງທຳ

## ໔. ລະກຸນຕະກະພັດທິຍະເຖຣະວັດຖຸ

## ເລື້ອງພຣະລະກຸນະຕະກະພັດທິຍະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ຢູ່ປ່າ ໓໐ ອົງ ທີ່ເຫັນພຣະລະກຸນຕະກະ-
ພັດທິຍະເຖຣະຮູບຮ່າງນ້ອຍຄືສາມະເນນ ດັ່ງນີ້)

[໔໖໐] ບຸກຄົນບໍ່ຊື່ວ່າເປັນເຖຣະ[໑]ພຽງຍ້ອນມີຜົມຫງອກ
ຜູ້ທີ່ແກ່ແຕ່ໄວທໍ່ນັ້ນ ຮຽກວ່າ ຄົນແກ່ເປົ່າ

[໔໖໑] ສ່ວນຜູ້ມີສັດຈະ ມີທຳ[໒]
ມີອະຫິງສາ ສັນຍະມະ ແລະທະມະ[໓]
ຄາຍມົນທິນໄດ້ແລ້ວ ເປັນປາດ ຊື່ວ່າ ເຖຣະ

## ໕. ສຳພະຫຸລະພິກຂຸວັດຖຸ

## ເລື້ອງພິກຂຸຫຼາຍອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍທີ່ເວົ້າຈາວ້ອງໄວ ດັ່ງນີ້)

[໔໖໒] ຍ້ອນເພດພຽງການເວົ້າຈາລ່ຽນໄຫຼ
ຫຼືຍ້ອນມີຜິວພັນງົດງາມ
ແຕ່ຍັງມີຄວາມຣິດສະຫຍາ ຂີ້ຖີ່ ແລະໂອ້ອວດ
ບຸກຄົນກໍບໍ່ຊື່ວ່າຄົນດີໄດ້

[໔໖໓] ສ່ວນຜູ້ຕັດຄວາມຣິດສະຫຍາເປັນຕົ້ນນີ້ໄດ້
ຖອນຂຶ້ນເຮັດໃຫ້ຮາກຂາດແລ້ວ
ຄາຍໂທດໄດ້ແລ້ວ ເປັນຜູ້ມີປັນຍາ
ຈຶ່ງຈະຊື່ວ່າ ຄົນດີ

## ໖. ຫັດຖະກະວັດຖຸ

### ເລື້ອງຫັດຖະກະພິກຂຸ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະຫັດຖະກະຜູ້ເວົ້າຈາເຫຼາະແຫຼະ ດັ່ງນີ້)

[໒໖໔] ຜູ້ບໍ່ມີຂໍ້ວັດປະຕິບັດ໑ ເວົ້າຈາເຫຼາະແຫຼະ
ແມ່ນມີຫົວໂລ້ນ ກໍບໍ່ຊື່ວ່າສະມະນະ
ຜູ້ເຕັມໄປດ້ວຍຄວາມປາຖະໜາ ແລະຄວາມຢາກໄດ້
ຈະເປັນສະມະນະໄດ້ແນວໃດ

[໒໖໕] ສ່ວນຜູ້ໃດລະງັບບາບນ້ອຍໃຫຍ່ລົງໄດ້ໂດຍເດັດຂາດ
ແລະຍ້ອນເຫດທີ່ລະງັບບາບທັງຫຼາຍໄດ້ນີ້ເອງ
ເຂົາຈຶ່ງຮຽກຜູ້ນັ້ນວ່າ ສະມະນະ

## ໗. ອັນຍະຕະຣະພາມມະນະວັດຖຸ

### ເລື້ອງພາມຄົນໃດຄົນໜຶ່ງ

(ພາມຄົນໜຶ່ງເປັນນັກບວດນອກພຣະພຸດທະສາດສະໜາທ່ຽວບິນທະບາດຄືພິກຂຸ ມື້ໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ປະສົງຈະໃຫ້ພຣະອົງຕັດຮຽກວ່າ ພິກຂຸ ພຣະອົງຈຶ່ງຕັດພຣະຄາຖາ ດັ່ງນີ້)

[໒໖໖] ບຸກຄົນບໍ່ຊື່ວ່າເປັນພິກຂຸ໑ ພຽງຍ້ອນຂໍຈາກຜູ້ອື່ນເທົ່ານັ້ນ
ທັງບໍ່ຊື່ວ່າເປັນພິກຂຸ ຍ້ອນຍັງສະມາທານທຳທີ່ເປັນພິດຢູ່໒

[໒໖໗] ໃນສາດສະໜານີ້ ຜູ້ທີ່ລອຍບຸນແລະບາບໄດ້ແລ້ວ
ປະພຶດພົມມະຈັນ ຢູ່ໃນໂລກດ້ວຍປັນຍາ
ຈຶ່ງຈະຊື່ວ່າ ພິກຂຸ

## ໘. ຕິດຖິຍະວັດຖຸ

### ເລື້ອງເດຍຣະຖີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໖໘] ບຸກຄົນໂງ່ຈ້າບໍ່ຮູ້ອັນໃດ ພຽງແຕ່ນັ່ງມິດ ໆ ຢູ່ ບໍ່ຊື່ວ່າເປັນມຸນີ
ສ່ວນບຸກຄົນຜູ້ສະຫຼາດ ເລືອກຊັ່ງເອົາແຕ່ສິ່ງທີ່ດີ ລະຖິ້ມສິ່ງທີ່ຊົ່ວ

[໔໖໙] ຄືບຸກຄົນເລືອກຊັ່ງສິ່ງຂອງ ຈຶ່ງຈະຊື່ວ່າ ມຸນີແທ້
ຜູ້ທີ່ຮູ້ໂລກທັງສອງ ກໍຮຽກວ່າ ມຸນີ (ເຊັ່ນກັນ)[໓]

## ໙. ອະຣິຍະພາລິສິກະວັດຖຸ

### ເລື້ອງພານເບັດຊື່ອະຣິຍະ

(ພຣະຜູ້ມີພຣະພາກເຈົ້າຕັດຖາມຊື່ນາຍພານເບັດ ນາຍພານເບັດທູນຕອບວ່າຊື່ອະຣິຍະ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດພຣະຄາຖານີ້ແກ່ເຂົາ ດັ່ງນີ້)

[໔໗໐] ບຸກຄົນບໍ່ຊື່ວ່າເປັນອະຣິຍະ ຍ້ອນຍັງບຽດບຽນສັດຢູ່
ແຕ່ຊື່ວ່າ ອະຣິຍະ ຍ້ອນບໍ່ບຽດບຽນສັດທັງປວງ

## ໑໐. ສຳພະຫຸລະສີລາທິສຳປັນນະພິກຂຸວັດຖຸ

### ເລື້ອງພິກຂຸຜູ້ເຖິງພ້ອມດ້ວຍສີນເປັນຕົ້ນຫຼາຍອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໗໑] ພິກຂຸ ດ້ວຍເຫດພຽງມີສີນ[໑]ແລະຂໍ້ວັດປະຕິບັດ[໒]
ແມ່ນດ້ວຍຄວາມເປັນພະຫູສູດ[໓] ດ້ວຍການໄດ້ສະມາທິ[໔]
ຫຼື ດ້ວຍການນອນໃນບ່ອນສະງັດ

[໔໗໒] ຫຼື ດ້ວຍການຮູ້ປະຈັກວ່າເຮົາໄດ້ສຳຜັດເນກຂຳມະສຸກ[໕]
ທີ່ປຸຖຸຊົນບໍ່ເຄີຍໄດ້ສຳຜັດ
ແຕ່ຖ້າທ່ານຍັງບໍ່ບັນລຸຄວາມສິ້ນອາສະວະ
ກໍຢ່າໄວ້ວາງໃຈ

**ທຳມັດຖະວັກທີ ໑໙ ຈົບ**

# ໒໐. ມັກຄະວັກ

## ໝວດວ່າດ້ວຍມັກ

## ໑. ປັນຈະສະຕະພິກຂຸວັດຖຸ

### ເລື້ອງພິກຂຸ ໕໐໐ ອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸ ໕໐໐ ອົງ ດັ່ງນີ້)

[໒໗໓] ບັນດາມັກ ມັກມີອົງ ໘ ປະເສີດທີ່ສຸດ
ບັນດາສັດຈະ ອະຣິຍະສັດ ໔ ປະເສີດທີ່ສຸດ
ບັນດາທຳ ວິຣາຄະທຳ[໑]ປະເສີດທີ່ສຸດ
ບັນດາສັດສອງຕີນ[໒]ຕະຖາຄົດຜູ້ມີຈັກຂຸ[໓] ປະເສີດທີ່ສຸດ[໔]

[໒໗໔] ທາງເພື່ອຄວາມບໍລິສຸດແຫ່ງທັດສະນະ
ຄືທາງນີ້ທໍ່ນັ້ນ ບໍ່ແມ່ນທາງອື່ນ
ຍ້ອນເຫດນັ້ນ ທ່ານທັງຫຼາຍຈົ່ງດຳເນີນໄປຕາມທາງນີ້ແລ
ຍ້ອນທາງນີ້ເປັນທາງລວງມານໃຫ້ຫຼົງ

[໒໗໕] ດ້ວຍວ່າ ທ່ານທັງຫຼາຍດຳເນີນໄປຕາມທາງນີ້ແລ້ວ
ຈັກເຮັດບ່ອນສຸດແຫ່ງທຸກໄດ້
ເຮົາຮູ້ວິທີຖອນລູກສອນຄືກິເລດແລ້ວ
ຈຶ່ງຊີ້ບອກທາງນີ້ແກ່ທ່ານທັງຫຼາຍ

[໒໗໖] ທ່ານທັງຫຼາຍຄວນເຮັດຄວາມພຽນເອງເທີ້ນ
ຕະຖາຄົດເປັນພຽງຜູ້ຊີ້ບອກທໍ່ນັ້ນ
ຜູ້ພໍ່າເພັງພາວະນາ ດຳເນີນຕາມທາງນີ້ແລ້ວ ເພ່ງພິນິດຢູ່
ຈັກພົ້ນຈາກເຄື່ອງຜູກມັດແຫ່ງມານໄດ້[໕]

## ໒. ອະນິດຈະລັກຂະນະວັດຖຸ

### ເລື້ອງອະນິດຈະລັກສະນະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໗໗] ເມື່ອໃດ ອະຣິຍະສາວົກພິຈາລະນາເຫັນດ້ວຍປັນຍາວ່າ
ສັງຂານທັງຫຼາຍທັງປວງບໍ່ທ່ຽງ
ເມື່ອນັ້ນ ຍ່ອມໜ່າຍໃນທຸກ
ນັ້ນເປັນທາງແຫ່ງຄວາມບໍລິສຸດ

## ໓. ທຸກຂະລັກຂະນະວັດຖຸ

### ເລື້ອງທຸກຂະລັກສະນະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໗໘] ເມື່ອໃດ ອະຣິຍະສາວົກພິຈາລະນາເຫັນດ້ວຍປັນຍາວ່າ
ສັງຂານທັງຫຼາຍທັງປວງເປັນທຸກ
ເມື່ອນັ້ນຍ່ອມໜ່າຍໃນທຸກ
ນັ້ນເປັນທາງແຫ່ງຄວາມບໍລິສຸດ

## ໔. ອະນັດຕະລັກຂະນະວັດຖຸ

### ເລື້ອງອະນັດຕະລັກສະນະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໗໙] ເມື່ອໃດ ອະຣິຍະສາວົກພິຈາລະນາເຫັນດ້ວຍປັນຍາວ່າ
ທຳທັງຫຼາຍທັງປວງເປັນອະນັດຕາ
ເມື່ອນັ້ນ ຍ່ອມໜ່າຍໃນທຸກ
ນັ້ນເປັນທາງແຫ່ງຄວາມບໍລິສຸດ໌

## ໕. ປະທານກຳມິກະຕິດສະເຖຣະວັດຖຸ

### ເລື້ອງພຣະປະທານກຳມິກະຕິດສະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໘໐] ຄົນທີ່ບໍ່ດຸໝັ່ນໃນເວລາທີ່ຄວນດຸໝັ່ນ
ທັງທີ່ຍັງໜຸ່ມຍັງສາວ ມີກຳລັງ

ແຕ່ກັບຂີ້ຄ້ານ ມີຄວາມຄິດໃຝ່ຕ່ຳ[໑] ປາສະຈາກຄວາມພຽນ
ຂີ້ຄ້ານຫຼາຍ ຍ່ອມບໍ່ປະສົບທາງ[໒]ດ້ວຍປັນຍາ

## ໓. ສູກະຣະເປຕະວັດຖຸ

### ເລື້ອງສູກະຣະເຜດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໒໘໑] ບຸກຄົນເພິ່ງຮັກສາວາຈາ[໓] ເພິ່ງສັງລວມໃຈ[໔]
ແລະບໍ່ເພິ່ງເຮັດຄວາມຊົ່ວທາງກາຍ[໕]
ເພິ່ງຊຳຣະກຳມະບົດທັງ ໓ ປະການນີ້ໃຫ້ມົດຈົດ
ຈະເພິ່ງພົບທາງທີ່ພຣະພຸດທະເຈົ້າປະກາດໄວ້

## ໗. ໂປຖິລະເຖຣະວັດຖຸ

### ເລື້ອງພຣະໂປຖິລະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ໂປຖິລະເຖຣະ ດັ່ງນີ້)

[໒໘໒] ປັນຍາ[໑]ເກີດຍ້ອນການປະກອບ[໒]
ແລະເສື່ອມໄປຍ້ອນການບໍ່ປະກອບ
ເມື່ອຮູ້ທາງຈະເລີນແລະທາງເສື່ອມແຫ່ງປັນຍາທັງ ໒ ທາງນີ້ແລ້ວ
ບຸກຄົນເພິ່ງຕັ້ງຕົນໂດຍວິທີທີ່ປັນຍາຈະຈະເລີນຍິ່ງຂຶ້ນ

## ໘. ສຳພະຫຸລະມະຫັນລະກະພິກຂຸວັດຖຸ

### ເລື້ອງພິກຂຸແກ່ຫຼາຍອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໒໘໓] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຕັດປ່າ[໓] ແຕ່ຢ່າຕັດຕົ້ນໄມ້
ຍ້ອນໄພ[໔]ຍ່ອມເກີດຈາກປ່າ
ທ່ານທັງຫຼາຍເມື່ອຕັດປ່າ ແລະໝູ່ໄມ້ໃນປ່າແລ້ວ[໕]
ຈົ່ງເປັນຜູ້ບໍ່ມີປ່າຢູ່ເທີ້ນ

[໔໗໔] ຕາບໃດ ບຸຣຸດຍັງບໍ່ຕັດໝູ່ໄມ້ໃນປ່າ
ແມ່ນພຽງເລັກໜ້ອຍໃນສະຕີທັງຫຼາຍ
ຕາບນັ້ນ ເຂົາຍ່ອມມີໃຈຜູກພັນ
ຄືງົວນ້ອຍທີ່ຍັງດື່ມນົມມີໃຈຜູກພັນໃນແມ່ງົວ ສັນນັ້ນ

## ໙. ສາຣີປຸດຕະເຖຣະສັດທິວິຫາຣິກະວັດຖຸ

### ເລື້ອງສັດທິວິຫາຣິກຂອງພຣະສາຣີບຸດເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ເປັນສິດຂອງພຣະສາຣີບຸດ ດັ່ງນີ້)

[໔໗໕] ທ່ານຈົ່ງຕັດຄວາມຮັກຂອງຕົນ
ຄືຕັດດອກບົວທີ່ເກີດໃນສາຣະທະການ
ຈົ່ງເພີ່ມພູນທາງແຫ່ງສັນຕິ[១]ທີ່ນັ້ນ
ຍ້ອນພຣະສຸຄົດເຈົ້າ ສະແດງນິບພານໄວ້ແລ້ວ

## ໑໐. ມະຫາທະນະວານິຊະວັດຖຸ

### ເລື້ອງພໍ່ຄ້າມີຊັບຫຼາຍ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພໍ່ຄ້າຜ້າທີ່ພັກຢູ່ແຄມຝັ່ງແມ່ນໍ້າ ດັ່ງນີ້)

[໔໗໖] ຄົນພານມັກຄິດແນວນີ້ວ່າ ເຮົາຈັກຢູ່ບ່ອນນີ້ຕະຫຼອດລະດູຝົນ
ເຮົາຈັກຢູ່ບ່ອນນີ້ຕະຫຼອດລະດູໜາວແລະລະດູຮ້ອນ
ຊື່ວ່າຍ່ອມບໍ່ຮູ້ອັນຕະລາຍ[២]ທີ່ຈະມາເຖິງຕົນ

## ໑໑. ກິສາໂຄຕະມີວັດຖຸ

### ເລື້ອງນາງກິສາໂຄຕະມີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ນາງກິສາໂຄຕະມີ ດັ່ງນີ້)

[໔໗໗] ນໍຣະຊົນຜູ້ມົວເມົາໃນບຸດແລະປະສຸສັດ
ມີໃຈກັງວົນຂ້ອງໃນອາລົມຕ່າງ ໆ[៣]
ຍ່ອມຖືກຄວາມຕາຍດຶງລາກໄປ

ຄືຊາວບ້ານຜູ້ຫຼັບໄຫຼຖືກແມ່ນ້ຳພັດພາໄປ ສັນນັ້ນ

## ໑໘. ປະຕາຈາຣາວັດຖຸ

### ເລື້ອງນາງປະຕາຈາຣາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ນາງປະຕາຈາຣາ ດັ່ງນີ້)

[໒໘໘] ບຸກຄົນເມື່ອເຖິງເວລາຈະຕາຍ
ບຸດທັງຫຼາຍກໍຕ້ານທານໄວ້ບໍ່ໄດ້
ບິດາກໍຕ້ານທານໄວ້ບໍ່ໄດ້
ພວກພ້ອງກໍຕ້ານທານໄວ້ບໍ່ໄດ້
ແມ່ນຍາດພີ່ນ້ອງກໍຕ້ານທານໄວ້ບໍ່ໄດ້

[໒໘໙] ບັນດິດຜູ້ສັງລວມໃນສີນ ຮູ້ຄວາມຈິງນີ້ແລ້ວ
ເພິ່ງຟ້າວເລັ່ງຊຳຣະທາງອັນຈະນຳໄປສູ່ນິບພານ

**ມັກຄະວັກທີ ໒໐ ຈົບ**

# ໒໑. ປະກິນນະກະວັກ

## ໝວດວ່າດ້ວຍເລື້ອງຕ່າງ ໆ

## ໑. ອັດຕະໂນປຸບພະກຳມະວັດຖຸ

### ເລື້ອງບຸບພະກຳຂອງພຣະອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໒໗໐] ຖ້າເຫັນວ່າຈະໄດ້ສຸກອັນຍິ່ງໃຫຍ່[໑]
ດ້ວຍການເສຍສະລະສຸກອັນເລັກໜ້ອຍ
ນັກປາດເພິ່ງເສຍສະລະສຸກອັນເລັກໜ້ອຍ
ເພື່ອເຫັນແກ່ສຸກອັນຍິ່ງໃຫຍ່[໒]

## ໒. ກຸກກຸຕັນທະຂາທິກາວັດຖຸ

### ເລື້ອງກຸມາຣີກາກິນໄຂ່ໄກ່

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ນາງຍັກຂິນີແລະນາງກຸນລະທິດາ ດັ່ງນີ້)

[໒໗໑] ຜູ້ໃດປາຖະໜາສຸກເພື່ອຕົນ ດ້ວຍການກໍ່ທຸກໃຫ້ຄົນອື່ນ
ຜູ້ນັ້ນຕ້ອງກ່ຽວພັນກັບເວນ ບໍ່ພົ້ນຈາກເວນໄປໄດ້

## ໓. ພັດທິຍະພິກຂຸວັດຖຸ

### ເລື້ອງພິກຂຸຊາວເມືອງພັດທິຍະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຊາວເມືອງພັດທິຍະຜູ້ຂົນຂວາຍໃນການປະດັບຊຽງຕີນ ດັ່ງນີ້)

[໒໗໒] ພິກຂຸເຫຼົ່າໃດລະຖິ້ມກິດທີ່ຄວນເຮັດ[໑]
ແຕ່ກັບເຮັດກິດທີ່ບໍ່ຄວນເຮັດ[໒]
ອາສະວະທັງຫຼາຍຍ່ອມຈະເລີນແກ່ພິກຂຸເຫຼົ່ານັ້ນ
ຜູ້ຖືໂຕຈັດ ມົວແຕ່ຜະໝາດ

[໘໑໓] ສ່ວນພິກຂຸເຫຼົ່າໃດມີສະຕິຕັ້ງໝັ້ນໃນກາຍ[໓]ເປັນປະຈຳ
ພິກຂຸເຫຼົ່ານັ້ນໝັ່ນເຮັດຄວາມພຽນໃນກິດທີ່ຄວນເຮັດ
ບໍ່ເຮັດກິດທີ່ບໍ່ຄວນເຮັດ
ອາສະວະທັງຫຼາຍຂອງທ່ານຜູ້ມີສະຕິສຳປະຊັນຍະ
ຍ່ອມເຖິງການສູນສິ້ນໄປ

## ໘. ລະກຸນຕະກະພັດທິຍະວັດຖຸ

### ເລື້ອງພຣະລະກຸນຕະກະພັດທິຍະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໘໑໔] ບຸກຄົນຂ້າມານດາ[໔] ຂ້າບິດາ[໕]
ຂ້າກະສັດຕາທິຣາດທັງ ໒ ພຣະອົງໄດ້ຜ
ຂ້າຊາວແວ່ນແຄວ້ນ໑ພ້ອມເຈົ້າພະນັກງານ[໖]ແລ້ວ
ດຳເນີນຊີວິດເປັນພາມ[໗]ຢູ່ຢ່າງຂາດທຸກ

[໘໑໕] ບຸກຄົນຂ້າມານດາ ຂ້າບິດາ
ຂ້າກະສັດຕາທິຣາດທັງ ໒ ພຣະອົງໄດ້
ທຳລາຍທາງເສືອຜ່ານທີ່ ໕[໔] ໄດ້
ດຳເນີນຊີວິດເປັນພາມຢູ່ຢ່າງຂາດທຸກ

## ໙. ທາຣຸສາກະຕິກະວັດຖຸ

### ເລື້ອງນາຍທາຣຸສາກະຕິກະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະຣາຊາ ແລະນາຍທາຣຸສາກະຕິກະ ພ້ອມຄອບຄົວ ດັ່ງນີ້)

[໘໑໖] ເຫຼົ່າພຣະສາວົກຂອງພຣະໂຄດົມ
ມີສະຕິຕັ້ງໝັ້ນໃນພຣະພຸດທະເຈົ້າຢູ່ປະຈຳ
ທັງກາງເວັນແລະກາງຄືນ
ຊື່ວ່າຕື່ນດ້ວຍດີຢູ່ສະເໝີ

[໘໑໗] ເຫຼົ່າພຣະສາວົກຂອງພຣະໂຄດົມ

ມີສະຕິຕັ້ງໝັ້ນໃນພຣະທຳເປັນປະຈຳ
ທັງກາງເວັນແລະກາງຄືນ
ຊື່ວ່າຕື່ນດ້ວຍດີຢູ່ສະເໝີ

[໒໙໘] ເຫຼົ່າພຣະສາວົກຂອງພຣະໂຄດົມ
ມີສະຕິຕັ້ງໝັ້ນໃນພຣະສົງຢູ່ປະຈຳ
ທັງກາງເວັນແລະກາງຄືນ
ຊື່ວ່າຕື່ນດ້ວຍດີຢູ່ສະເໝີ

[໒໙໙] ເຫຼົ່າພຣະສາວົກຂອງພຣະໂຄດົມ
ມີສະຕິຕັ້ງໝັ້ນໃນກາຍຢູ່ປະຈຳ
ທັງກາງເວັນແລະກາງຄືນ
ຊື່ວ່າຕື່ນດ້ວຍດີຢູ່ສະເໝີ

[໓໐໐] ເຫຼົ່າພຣະສາວົກຂອງພຣະໂຄດົມ
ມີໃຈຍິນດີໃນຄວາມບໍ່ບຽດບຽນ
ທັງກາງເວັນແລະກາງຄືນ
ຊື່ວ່າຕື່ນດ້ວຍດີຢູ່ສະເໝີ

[໓໐໑] ເຫຼົ່າພຣະສາວົກຂອງພຣະໂຄດົມ
ມີໃຈຍິນດີໃນການຈະເລີນພາວະນາ
ທັງກາງເວັນແລະກາງຄືນ
ຊື່ວ່າຕື່ນດ້ວຍດີຢູ່ສະເໝີ

# ຝ. ວັດຊີປຸດຕະກະພິກຂຸວັດຖຸ

## ເລື້ອງພິກຂຸຜູ້ເປັນໂອຣົດຂອງເຈົ້າວັດຊີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ເປັນໂອຣົດຂອງເຈົ້າວັດຊີ ດັ່ງນີ້)

[໓໐໒] ການບວດເປັນຂອງຍາກ°
ຄວາມຍິນດີໃນການພ່ຳເພັງທຳກໍເປັນຂອງຍາກ
ເຮືອນທີ່ຄອບຄອງບໍ່ດີ ກໍ່ໃຫ້ເກີດທຸກ°
ການຢູ່ຮ່ວມກັບຄົນສະເໝີກັນເປັນທຸກ

ການເດີນທາງໄກ໌ກໍເປັນທຸກ
ຍ້ອນແນວນັ້ນ ບຸກຄົນຈຶ່ງບໍ່ຄວນເປັນຜູ້ເດີນທາງໄກ
ແລະບໍ່ຄວນໃຫ້ທຸກຕິດຕາມໄດ້

## ໗. ຈິດຕະຄະຫະປະຕິວັດຖຸ

### ເລື້ອງຈິດຕະຄະຫະບໍດີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະອານົນເຖຣະ ດັ່ງນີ້)

[໓໐໓] ຄົນມີສັດທາ ສົມບູນດ້ວຍສິນ໑
ພຽບພ້ອມດ້ວຍຍົດ໌ແລະໂພຄະຊັບ
ຈະໄປສູ່ຖິ່ນໃດ ໆ ຍ່ອມໄດ້ຮັບການບູຊາໃນຖິ່ນນັ້ນ ໆ

## ໘. ຈູລະສຸພັນທາວັດຖຸ

### ເລື້ອງນາງຈູລະສຸພັນທາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ບໍລິສັດ ໔ ດັ່ງນີ້)

[໓໐໔] ສັດຕະບຸຣຸດຍ່ອມຜາກົດໃນບ່ອນໄກ
ຄືພູຫິມະພານ ສັນນັ້ນ
ອະສັດຕະບຸຣຸດທັງຫຼາຍ ໃນບ່ອນນີ້ຍ່ອມບໍ່ຜາກົດ
ຄືລູກສອນທີ່ຍິງໄປໃນເວລາກາງຄືນ ສັນນັ້ນ໌

## ໙. ເອກະວິຫາຣິເຖຣະວັດຖຸ

### ເລື້ອງພຣະເຖຣະຜູ້ຢູ່ອົງດຽວ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໐໕] ພິກຂຸເພິ່ງຍິນດີການນັ່ງຜູ້ດຽວ ການນອນຜູ້ດຽວ໒
ບໍ່ຂີ້ຄ້ານ ທ່ຽວໄປຕາມລຳພັງ
ເຝິກຝົນຢູ່ຜູ້ດຽວ ແລະຍິນດີການຢູ່ປ່າ

**ປະກິນນະກະວັກທີ ໒໑ ຈົບ**

# ໒໒. ນິຣະຍະວັກ

## ໝວດວ່າດ້ວຍຄົນເຮັດກຳຊົ່ວຕົກນະຣົກ

### ໑. ສຸນທະຣີປະຣິພາຊິກາວັດຖຸ

### ເລື້ອງປະຣິພາຊິກາຊື່ສຸນທະຣີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໐໕] ຄົນທີ່ມັກກ່າວຄຳບໍ່ຈິງ
ຫຼືຄົນທີ່ເຮັດຄວາມຊົ່ວແລ້ວກ່າວວ່າ
ຂ້ອຍບໍ່ໄດ້ເຮັດ ຕ່າງກໍຕົກນະຣົກ
ຄົນ ໒ ຈຳພວກນັ້ນ ຕ່າງກໍມີກຳຊົ່ວ
ຕາຍໄປແລ້ວ ມີຄະຕິເທົ່າທຽມກັນໃນໂລກໜ້າ໌

### ໒. ທຸກຂະປີລິຕະສັດຕະວັດຖຸ

### ເລື້ອງສັດຖືກທຸກບຽດບຽນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໐໖] ພິກຂຸຊົ່ວຈຳນວນຫຼາຍມີຜ້າກາສາວະພັນທີ່ຄໍ
ມີທຳຊົ່ວຊາມ ບໍ່ສັງລວມ
ຍ່ອມຕົກນະຣົກຍ້ອນບາບກຳທັງຫຼາຍ

### ໓. ວັກຄຸມຸທາຕີຣິຍະພິກຂຸວັດຖຸ

### ເລື້ອງພິກຂຸຢູ່ຝັ່ງແມ່ນ້ຳວັກຄຸມຸທາ

(ພຣະຜູ້ມີພຣະພາກເຈົ້າຊົງຜາຣົບພິກຂຸຜູ້ຢູ່ຝັ່ງແມ່ນ້ຳວັກຄຸມຸທາ ເວົ້າອວດອຸຕະຣິມະນຸດສະທຳທີ່ບໍ່ມີໃນຕົນຂອງກັນແລະກັນແກ່ຄະລິຫັດເພື່ອປາກທ້ອງ ຈຶ່ງຕັດພຣະຄາຖາແກ່ພິກຂຸເຫຼົ່ານັ້ນດັ່ງນີ້)

[໓໐໗] ການກືນກິນກ້ອນເຫຼັກແດງທີ່ຮ້ອນຄືແປວໄຟ

ຍັງດີກວ່າການທີ່ພິກຂຸຜູ້ທຸສິນ ບໍ່ສັງລວມ
ບໍຣິໂພກອາຫານທີ່ຊາວບ້ານເຂົາຖວາຍ[9]

## ໔. ເຂມະເສດຖີປຸດຕະວັດຖຸ

### ເລື້ອງບຸດເສດຖີຊື່ເຂມະກະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ນາຍເຂມະກະຜູ້ມັກເປັນຊູ້ກັບພັນລະຍາຂອງຄົນອື່ນ ດັ່ງນີ້)

[໓໐໙] ນໍຣະຊົນທີ່ພະໝາດ ມັກເປັນຊູ້ກັບພັນລະຍາຂອງຜູ້ອື່ນ
ຍ່ອມເຖິງຖານະ[6] ໔ ປະການ ຄື
(໑) ໄດ້ບາບ (໒) ນອນບໍ່ເປັນສຸກ
(໓) ຖືກນິນທາ (໔) ຕົກນະຣົກ

[໓໑໐] ຍ້ອນການໄດ້ບາບ ໑ ການໄດ້ຄະຕິທີ່ຊົ່ວ ໑
ຍິງຊາຍທີ່ຕ່າງສະດຸ້ງຢ້ານມີຄວາມສະນຸກໜ້ອຍດຽວ ໑
ຖືກພຣະຣາຊາລົງພຣະອາດຍາຢ່າງໜັກ ໑
ນໍຣະຊົນຈຶ່ງບໍ່ຄວນເປັນຊູ້ກັບພັນລະຍາຂອງຜູ້ອື່ນ

## ໕. ທຸບພະຈະພິກຂຸວັດຖຸ

### ເລື້ອງພິກຂຸຜູ້ວ່າຍາກ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ວ່າຍາກ ດັ່ງນີ້)

[໓໑໑] ຫຍ້າຄາທີ່ບຸກຄົນຈັບບໍ່ດີ ຍ່ອມບາດມືໄດ້ ສັນໃດ
ຄວາມເປັນສະມະນະທີ່ບຸກຄົນປະຕິບັດບໍ່ດີ[9]
ຍ່ອມດຶງເຂົ້າໄປໃນນະຣົກ ສັນນັ້ນ

[໓໑໒] ກຳທີ່ຫຍ່ອນຍານແນວໃດແນວໜຶ່ງ ຂໍ້ວັດປະຕິບັດທີ່ເສົ້າໝອງ
ແລະພົມມະຈັນທີ່ເພິ່ງຣະນຶກເຖິງດ້ວຍຄວາມຣະແວງສົງໄສ
ທັງ ໓ ນັ້ນ ບໍ່ມີຜົນຫຼາຍ[6]

[໓໑໓] ຫາກພິກຂຸເພິ່ງເຮັດກຳໃດ ກໍຄວນເຮັດກຳນັ້ນໃຫ້ຈິງຈັງ

ຄວນບາກບັ່ນເຮັດກຳນັ້ນໃຫ້ໝັ້ນຄົງ
ຍ້ອນທຳເຄື່ອງລະເວັ້ນທີ່ປະພຶດຢ່າງຫຍ່ອນຍານ
ມີແຕ່ຈະເຂ່ຍທຸລີ¹ລົງໃສ່ໂຕ

## ໖. ອິດສາປະກະຕິອິດຖີວັດຖຸ

### ເລື້ອງຍິງຂີ້ຫວງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ຍິງຂີ້ຫວງແລະແກ່ບໍລິສັດ ໔ ດັ່ງນີ້)

[໓໑໔] ຄວາມຊົ່ວ ບໍ່ເຮັດສາເລີຍດີກວ່າ
ຍ້ອນຣະນຶກເຖິງຄວາມຊົ່ວ ບຸກຄົນຍ່ອມເດືອດຮ້ອນໃນພາຍຫຼັງ
ສ່ວນຄວາມດີ ເຮັດໄວ້ເທີ້ນດີກວ່າ
ຍ້ອນເຮັດແລ້ວຣະນຶກເຖິງພາຍຫຼັງບຸກຄົນຍ່ອມບໍ່ເດືອດຮ້ອນ

## ໗. ອາຄັນຕຸກະພິກຂຸວັດຖຸ

### ເລື້ອງພິກຂຸອາຄັນຕຸກະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸອາຄັນຕຸກະຜູ້ຢູ່ໃນເມືອງຊາຍແດນ ດັ່ງນີ້)

[໓໑໕] ເມືອງຊາຍແດນໄດ້ຮັບການຄຸ້ມຄອງທັງພາຍໃນແລະພາຍນອກ ສັນໃດ
ທ່ານທັງຫຼາຍຈົ່ງຄຸ້ມຄອງຕົນໃຫ້ໄດ້ ສັນນັ້ນ
ຂະນະ²ຢ່າໄດ້ລ່ວງເລີຍທ່ານທັງຫຼາຍໄປສາ
ຍ້ອນເຫຼົ່າຊົນທີ່ປ່ອຍໃຫ້ຂະນະລ່ວງເລີຍໄປ
ຍ່ອມເສົ້າໂສກ ແອອັດຢູ່ໃນນະຣົກ³

## ໘. ນິຄັນຖະວັດຖຸ

### ເລື້ອງນິຄົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໑໖] ສັດທັງຫຼາຍຜູ້ລະອາຍໃນສິ່ງທີ່ບໍ່ຄວນລະອາຍ

ແລະບໍ່ລະອາຍໃນສິ່ງທີ່ຄວນລະອາຍ
ຊື່ວ່າຖືໝັ້ນມິດສາທິດຖິ ຍ່ອມໄປສູ່ທຸກຄະຕິ

[໓໑໗] ສັດທັງຫຼາຍຜູ້ເຫັນສິ່ງທີ່ບໍ່ຄວນຢ້ານວ່າຄວນຢ້ານ
ແລະເຫັນສິ່ງທີ່ຄວນຢ້ານວ່າບໍ່ຄວນຢ້ານ
ຊື່ວ່າຖືໝັ້ນມິດສາທິດຖິ ຍ່ອມໄປສູ່ທຸກຄະຕິ

## ໗. ຕິດຖິຍະສາວົກວັດຖຸ

### ເລື້ອງສາວົກເດຍຣະຖີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ສາວົກຂອງເດຍຣະຖີ ດັ່ງນີ້)

[໓໑໘] ສັດທັງຫຼາຍຜູ້ເຫັນສິ່ງທີ່ບໍ່ມີໂທດວ່າມີໂທດ[໑]
ແລະເຫັນສິ່ງທີ່ມີໂທດວ່າບໍ່ມີໂທດ
ຊື່ວ່າຖືໝັ້ນມິດສາທິດຖິ ຍ່ອມໄປສູ່ທຸກຄະຕິ

[໓໑໙] ສັດທັງຫຼາຍຜູ້ຮູ້ສິ່ງທີ່ມີໂທດວ່າມີໂທດ
ແລະຮູ້ສິ່ງທີ່ບໍ່ມີໂທດວ່າບໍ່ມີໂທດ
ຊື່ວ່າຖືໝັ້ນສຳມາທິດຖິ ຍ່ອມໄປສູ່ສຸກຄະຕິ

**ນິຣະຍະວັກທີ ໒໒ ຈົບ**

# ໒໓. ນາຄະວັກ

## ໝວດວ່າດ້ວຍຊ້າງ

## ໑. ອັດຕະທັນຕະວັດຖຸ

### ເລື້ອງການເຝິກຕົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະອານົນ ດັ່ງນີ້)

[໓໒໐] ເຮົາຈັກອົດກັ້ນຄຳເວົ້າລ່ວງເກີນ
ຄືພະຍາຊ້າງໃນສົງຄາມ

ອົດທົນລູກສອນທີ່ຕົກຈາກແລ່ງ
ຍ້ອນຄົນຈຳນວນຫຼາຍເປັນຜູ້ທຸສິນ

[໓໒໑] ຄົນທັງຫຼາຍນຳສັດພາຫະນະທີ່ເຝິກແລ້ວໄປສູ່ທີ່ປະຊຸມ
ພຣະຣາຊາຍ່ອມຊົງຣາດຊະພາຫະນະທີ່ເຝິກແລ້ວ
ໃນໝູ່ມະນຸດ ຄົນທີ່ອົດກັ້ນຄຳເວົ້າລ່ວງເກີນໄດ້
ຊື່ວ່າເປັນຜູ້ເຝິກຕົນໄດ້ແລ້ວ[໑] ເປັນຜູ້ປະເສີດທີ່ສຸດ

[໓໒໒] ມ້າອັດສະດອນ ມ້າອາຊາໄນ ມ້າສິນທົບ ຊ້າງໃຫຍ່
ທີ່ໄດ້ຮັບການເຝິກຫັດແລ້ວ ເປັນສັດປະເສີດ
ແຕ່ຄົນທີ່ເຝິກຕົນໄດ້ແລ້ວ ປະເສີດກວ່າສັດພາຫະນະເຫຼົ່ານັ້ນ[໒]

## ໒. ທັດຖາຈະຣິຍະປຸບພະກະພິກຂຸວັດຖຸ
## ເລື່ອງພິກຂຸຜູ້ເຄີຍເປັນນາຍຄວານຊ້າງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ເຄີຍເປັນນາຍຄວານຊ້າງ ດັ່ງນີ້)

[໓໒໓] ແທ້ຈິງ ບຸກຄົນບໍ່ສາມາດໄປສູ່ທິດທີ່ຍັງບໍ່ເຄີຍໄປ[໑]ດ້ວຍຍານເຫຼົ່ານີ້
ແຕ່ບຸກຄົນຜູ້ເຝິກຕົນໄດ້ແລ້ວ ສາມາດໄປສູ່ທິດທີ່ບໍ່ເຄີຍໄປ
ດ້ວຍຕົນທີ່ເຝິກແລ້ວ ທີ່ເຝິກດີແລ້ວ[໒]

## ໓. ປະຣິຊິນນະພາມມະນະປຸດຕະວັດຖຸ
## ເລື່ອງບຸດຂອງພາມຊະຣາ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ບຸດ ໔ ຄົນຂອງພາມຊະຣາ ດັ່ງນີ້)

[໓໒໔] ຊ້າງກຸນຊອນຊື່ທະນະປາລະກະ ຕົກມັນຫຼາຍ ຫ້າມໄດ້ຍາກ ຖືກຂັງໄວ້
ບໍ່ຍອມກິນຟ່ອນຫຍ້າ ຍ້ອນຣະນຶກເຖິງແຕ່ນາຄະວັນ[໓]

## ໔. ປະເສນທິໂກສະລະຣາຊະວັດຖຸ

## ເລື່ອງພຣະເຈົ້າປະເສນທິໂກສົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະເຈົ້າປະເສນທິໂກສົນຜູ້ສະເຫວີຍພຣະກະຍາຫານຫຼາຍ ດັ່ງນີ້)

[໓໘໕] ເມື່ອໃດ ບຸກຄົນຜູ້ຖືກຄວາມງ່ວງເຫງົາຄອບງຳ ບໍຣິໂພກຫຼາຍ
ມັກແຕ່ນອນກິ້ງເກືອກໄປມາ
ເມື່ອນັ້ນ ເຂົາຍ່ອມມີປັນຍາເສື່ອຍຊາ ມັກເຂົ້າຫ້ອງເປັນອາຈິນ
ຄືໝູອ້ວນທີ່ເຂົາຂຸນດ້ວຍເສດອາຫານ ສັນນັ້ນ[໒]

# ໕. ສານຸສາມະເນຣະວັດຖຸ

## ເລື້ອງສານຸສາມະເນນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ສານຸສາມະເນນ ດັ່ງນີ້)

[໓໘໖] ແຕ່ກ່ອນຈິດນີ້ໄດ້ທ່ອງທ່ຽວໄປໃນອາລົມຕ່າງ ໆ
ຕາມຄວາມປາຖະໜາ ຕາມຄວາມຕ້ອງການ ຕາມຄວາມສະບາຍ
ມື້ນີ້ ເຮົາຈະຂົ່ມຈິດນັ້ນໂດຍອຸບາຍອັນແຍບຄາຍ
ຄືຄວານຊ້າງປາບພະຍົດຊ້າງຕົກມັນ ສັນນັ້ນ[໑]

# ໖. ປາເວຣະກະຫັດຖີວັດຖຸ

## ເລື້ອງຊ້າງປາເວຣະກະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໘໗] ທ່ານທັງຫຼາຍຈົ່ງຍິນດີໃນຄວາມບໍ່ຜະໝາດ
ຈົ່ງນຳຮັກສາຈິດຂອງຕົນ
ຈົ່ງຖອນຕົນຂຶ້ນຈາກຫຼົ່ມ[໒]
ຄືຊ້າງກຸນຊອນທີ່ຈົມລົງໃນຕົມ ຖອນຕົນຂຶ້ນໄດ້ ສັນນັ້ນ

# ໗. ສຳພະຫຸລະພິກຂຸວັດຖຸ[໓]

## ເລື້ອງພິກຂຸຫຼາຍອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໘໘] ຖ້າບຸກຄົນເພິ່ງໄດ້ສະຫາຍຜູ້ມີປັນຍາຮັກສາຕົນ
ທ່ຽວໄປນຳກັນ ເປັນສາທຸວິຫາຣີ[໔] ເປັນນັກປາດ

ຄອບງຳອັນຕະລາຍທັງປວງໄດ້ແລ້ວ
ເພິ່ງມີໃຈຊ້ອຍຊື່ນ ມີສະຕິ ທ່ຽວໄປກັບສະຫາຍນັ້ນເທີ້ນ

[໓໘໙] ຖ້າບຸກຄົນບໍ່ເພິ່ງໄດ້ສະຫາຍຜູ້ມີປັນຍາຮັກສາຕົນ
ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ ເປັນນັກປາດ
ກໍເພິ່ງປະພຶດຢູ່ຜູ້ດຽວເທີ້ນ
ຄືພຣະຣາຊາຊົງລະຖິ້ມແຄວ້ນທີ່ຊົງຊະນະແລ້ວ
ຊົງປະພຶດຢູ່ຜູ້ດຽວ
ແລະຄືຊ້າງມາຕັງຄະລະຖິ້ມຝູງຢູ່ໂຕດຽວໃນປ່າ ສັນນັ້ນ

[໓໓໐] ການທ່ຽວໄປຂອງບຸກຄົນຜູ້ດຽວເປັນຄວາມປະເສີດ
ຍ້ອນຄຸນເຄື່ອງຄວາມເປັນສະຫາຍ³ບໍ່ມີໃນຄົນພານ
ອັນໜຶ່ງ ບຸກຄົນຄວນມີຄວາມຂົນຂວາຍໜ້ອຍ
ທ່ຽວໄປຜູ້ດຽວ ບໍ່ເພິ່ງເຮັດຄວາມຊົ່ວ
ຄືຊ້າງມາຕັງຄະທ່ຽວໄປໂຕດຽວໃນປ່າ ສັນນັ້ນ

## ໗. ມາຣະວັດຖຸ

## ເລື້ອງມານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ມານຜູ້ມີບາບ ດັ່ງນີ້)

[໓໓໑] ເມື່ອມີກິດເກີດຂຶ້ນ ສະຫາຍທັງຫຼາຍນຳສຸກມາໃຫ້
ຄວາມຍິນດີດ້ວຍປັດໄຈຕາມມີຕາມໄດ້ ນຳສຸກມາໃຫ້
ໃນເວລາສິ້ນຊີວິດ ບຸນນຳສຸກມາໃຫ້
ການລະທຸກໄດ້ທັງໝົດ ນຳສຸກມາໃຫ້

[໓໓໒] ໃນໂລກ ການເກື້ອກູນມານດາ ນຳສຸກມາໃຫ້
ການເກື້ອກູນບິດາ ນຳສຸກມາໃຫ້
ການເກື້ອກູນສະມະນະ ນຳສຸກມາໃຫ້
ການເກື້ອກູນທ່ານຜູ້ປະເສີດ³ກໍນຳສຸກມາໃຫ້

[໓໓໓] ສີນນຳສຸກມາໃຫ້ຕາບເທົ່າຊະຣາ⁴
ສັດທາທີ່ຕັ້ງໝັ້ນແລ້ວ ນຳສຸກມາໃຫ້

ການໄດ້ປັນຍາ ນຳສຸກມາໃຫ້
ການບໍ່ເຮັດບາບທັງຫຼາຍ ກໍນຳສຸກມາໃຫ້

**ນາຄະວັກທີ ໒໓ ຈົບ**

# ໒໔. ຕັນຫາວັກ

## ໝວດວ່າດ້ວຍຕັນຫາ

# ໑. ກະປິລະມັດສະວັດຖຸ

## ເລື້ອງປາກະປິລະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ບໍລິສັດ ໔ ດັ່ງນີ້)

[໓໓໔] ຕັນຫາຍ່ອມຈະເລີນແກ່ມະນຸດຜູ້ປະພຶດຜະໝາດ[๑]
ຄືເຄືອເຂົາຈະເລີນຢູ່ໃນປ່າ
ເຂົາຍ່ອມພະເນຈອນໄປມາ
ຄືລີງທີ່ຕ້ອງການໝາກໄມ້ ທ່ຽວພະເນຈອນໄປມາໃນປ່າ ສັນນັ້ນ

[໓໓໕] ຕັນຫາທີ່ຊົ່ວຊາມຊ່ານໄປໃນໂລກນີ້
ຄອບງຳບຸກຄົນໃດໄວ້ໄດ້
ຄວາມໂສກຍ່ອມຈະເລີນແກ່ບຸກຄົນນັ້ນ
ຄືຫຍ້າຄົມປາວທີ່ຖືກຝົນຕົກໃສ່ແລ້ວຈະເລີນງອກງາມຂຶ້ນ ສັນນັ້ນ

[໓໓໖] ສ່ວນບຸກຄົນໃດຄອບງຳຕັນຫາທີ່ຊົ່ວຊາມນັ້ນ
ເຊິ່ງລ່ວງໄດ້ຍາກໃນໂລກໄວ້ໄດ້
ຄວາມໂສກຍ່ອມຕົກໄປຈາກບຸກຄົນນັ້ນ
ຄືຢາດນ້ຳກິ້ງຕົກໄປຈາກໃບບົວ ສັນນັ້ນ

[໓໓໗] ຍ້ອນເຫດນັ້ນ ເຮົາຂໍເຕືອນທ່ານທັງຫຼາຍ
ຂໍທ່ານທັງຫຼາຍທີ່ປະຊຸມກັນໃນບ່ອນນີ້ ຈົ່ງມີຄວາມຈະເລີນ
ຂໍທ່ານທັງຫຼາຍຈົ່ງຂຸດຮາກເຫງົ້າແຫ່ງຕັນຫາ[๒]
ຄືຄົນຕ້ອງການຫຍ້າແຝກຂຸດຫຍ້າແຝກ
ມານຢ່າໄດ້ທຳລາຍທ່ານທັງຫຼາຍຢູ່ບໍ່ສິ້ນສຸດ
ຄືກະແສນ້ຳທຳລາຍໄມ້ອໍ້ ສັນນັ້ນ[๓]

# ໘. ສູກະຣະໂປຕິກາວັດຖຸ
## ເລື້ອງລູກໝູໂຕແມ່

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໓໘] ຕົ້ນໄມ້ ເມື່ອຮາກຍັງແຂງແຮງ ຍັງບໍ່ຖືກທຳລາຍ
ແມ່ນລຳຕົ້ນຖືກຕັດແລ້ວ ກໍງອກຂຶ້ນໄດ້ໃໝ່ ສັນໃດ
ຄວາມທຸກນີ້ ເມື່ອບຸກຄົນກຳຈັດຕັນຫານຸໄສບໍ່ໄດ້ຂາດ
ກໍຍ່ອມເກີດຂຶ້ນເລື້ອຍ ໆ ສັນນັ້ນ

[໓໓໙] ບຸກຄົນໃດຍັງມີກະແສຕັນຫາອັນແຮງກ້າ ໓໖ ສາຍ[໑]
ທີ່ມັກໄຫຼໄປສູ່ອາລົມອັນໜ້າພໍໃຈ
ຄວາມດຳຣິຫຼວງຫຼາຍທີ່ອາໄສຣາຄະ
ຍ່ອມນຳບຸກຄົນນັ້ນເຊິ່ງມີຄວາມເຫັນຜິດໄປ

[໓໔໐] ກະແສຕັນຫາທັງຫຼາຍໄຫຼໄປໃນອາລົມທັງໝົດ
ຕັນຫາຄືເຄືອເຂົາ ກໍງອກງາມຂຶ້ນ
ພວກທ່ານ ເມື່ອເຫັນຕັນຫາຄືເຄືອເຂົາທີ່ງອກງາມນັ້ນ
ຈົ່ງຕັດຮາກດ້ວຍປັນຍາ[໒]

[໓໔໑] ສັດໂລກຜູ້ມີແຕ່ໂສມະນັດຊາບຊ່ານ
ຊຸ່ມຊື່ນດ້ວຍສະເນ່ຫາ[໓]
ມົວແຕ່ຈະສະແຫວງຫາຄວາມສຸກສຳຣານກັນຢູ່
ຈຶ່ງຕ້ອງເຂົ້າເຖິງຊາດແລະຊະຣາບໍ່ສິ້ນສຸດ

[໓໔໒] ໝູ່ສັດຖືກລ້ອມໄວ້ດ້ວຍຕັນຫາທີ່ເຮັດໃຫ້ສະດຸ້ງ
ຈຶ່ງດີ້ນຣົນຄືກະຕ່າຍຖືກບ້ວງ
ໝູ່ສັດຜູ້ຖືກສັງໂຍດແລະກິເລດເຄື່ອງຂ້ອງ[໔]ມັດໄວ້ແໜ້ນ
ຍ່ອມໄດ້ຮັບຄວາມທຸກບໍ່ສິ້ນສຸດຊົ່ວການລະນານ

[໓໔໓] ໝູ່ສັດຖືກລ້ອມໄວ້ດ້ວຍຕັນຫາທີ່ເຮັດໃຫ້ສະດຸ້ງ
ຈຶ່ງດີ້ນຣົນຄືກະຕ່າຍຖືກບ້ວງ
ຍ້ອນເຫດນັ້ນ ພິກຂຸເມື່ອຫວັງໃຫ້ຕົນສິ້ນຣາຄະ
ຄວນບັນເທົາຕັນຫາທີ່ເຮັດໃຫ້ສະດຸ້ງສາ

# ໓. ວິບພັນຕະກະວັດຖຸ

## ເລື້ອງພິກຂຸຜູ້ກະສັນຢາກສິກ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ບໍລິສັດ ໔ ດັ່ງນີ້)

[໓໔໔] ບຸກຄົນໃດອອກຈາກອາໄລແລ້ວ[๑] ມີໃຈນ້ອມໄປໃນປ່າ[๒]
ພົ້ນຈາກປ່າແລ້ວ[๓]ຍັງແລ່ນເຂົ້າໄປສູ່ປ່ານັ້ນອີກ
ທ່ານທັງຫຼາຍຈົ່ງເບິ່ງບຸກຄົນນັ້ນ
ເຂົາພົ້ນຈາກເຄື່ອງຜູກມັດ ຍັງແລ່ນໄປສູ່ເຄື່ອງຜູກມັດຄືເກົ່າ

# ໔. ພັນທະນາຄາຣະວັດຖຸ

## ເລື້ອງຄຸກ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ເຫຼົ່າພິກຂຸຜູ້ເຫັນໂຈນຖືກຄຸມຂັງໃນຄຸກ ດັ່ງນີ້)

[໓໔໕] ນັກປາດທັງຫຼາຍບໍ່ໄດ້ກ່າວເຖິງເຄື່ອງຄຸມຂັງ
ທີ່ເຮັດດ້ວຍເຫຼັກ ເຮັດດ້ວຍໄມ້ ແລະເຮັດດ້ວຍຫຍ້າປ້ອງ
ວ່າເປັນເຄື່ອງຄຸມຂັງທີ່ໝັ້ນຄົງ ແຕ່ກ່າວເຖິງ
ຄວາມກຳໜັດຍິນດີໃນຕຸ້ມຫູແກ້ວມະນີ ແລະຄວາມໃຍດີໃນບຸດພັນລະຍາ
ວ່າເປັນເຄື່ອງຄຸມຂັງທີ່ໝັ້ນຄົງ

[໓໔໖] ນັກປາດທັງຫຼາຍກ່າວເຖິງຄວາມກຳໜັດ ເຄື່ອງຄຸມຂັງທີ່ໝັ້ນຄົງນັ້ນ
ວ່າມີປົກກະຕິໜ່ວງລົງ ຫຍ່ອນຍານ ແຕ່ແກ້ໃຫ້ລຸດຍາກ
ນັກປາດເຫຼົ່ານັ້ນຕັດເຄື່ອງຄຸມຂັງນັ້ນໄດ້ແລ້ວ
ບໍ່ເຍື່ອໃຍ ລະກາມສຸກ ອອກບວດ[๑]

# ໕. ເຂມາເຖຣີວັດຖຸ

## ເລື້ອງພຣະເຂມາເຖຣີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະເຂມາເຖຣີ ດັ່ງນີ້)

[໓໔໗] ສັດທັງຫຼາຍຜູ້ກຳໜັດຍິນດີດ້ວຍຣາຄະ[๒]
ຍ່ອມຕົກໄປສູ່ກະແສຕັນຫາ

ຄືແມງມຸມຕິດໃຍທີ່ຕົນຖັກໄວ້ເອງ
ນັກປາດທັງຫຼາຍຕັດກະແສຕັນຫານັ້ນໄດ້ແລ້ວ
ໝົດຄວາມເຍື່ອໃຍ ຍ່ອມລະທຸກທັງປວງໄປໄດ້

## ໖. ອຸຄຄະເສນເສດຖີປຸດຕະວັດຖຸ
## ເລື້ອງບຸດເສດຖີຊື່ອຸຄຄະເສນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ນາຍອຸຄຄະເສນ ດັ່ງນີ້)

[໓໔໘] ທ່ານຈົ່ງເປັນຜູ້ປ່ອຍວາງທັງອະດີດ ອະນາຄົດ ແລະປັດຈຸບັນ[໓]
ຈົ່ງເປັນຜູ້ເຖິງຝັ່ງແຫ່ງພົບ
ທ່ານຜູ້ມີໃຈລຸດພົ້ນໃນທຳທັງປວງແລ້ວ
ຈັກບໍ່ເຂົ້າເຖິງຊາດ ແລະຊະຣາອີກຕໍ່ໄປ

## ໗. ຈູລະທະນຸຄຄະຫະປັນທິຕະວັດຖຸ
## ເລື້ອງຈູລະທະນຸຄຄະຫະບັນດິດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸໜຸ່ມອົງໜຶ່ງຜູ້ກະສັນຢາກສິກ ດັ່ງນີ້)

[໓໔໙] ບຸກຄົນຜູ້ຖືກວິຕົກ[໑]ຍ່ຳຍີ ມີຣາຄະຫຼາຍ ເຫັນອາລົມວ່າງາມສະເໝີ
ຍ່ອມມີຕັນຫາພອກພູນຫຼາຍຂຶ້ນ ໆ
ບຸກຄົນເຊັ່ນນັ້ນແລຊື່ວ່າສ້າງເຄື່ອງຜູກມັດທີ່ແໜ້ນໜາ

[໓໕໐] ສ່ວນຜູ້ໃດຍິນດີໃນຊານເປັນທີ່ລະງັບວິຕົກ[໒]
ມີສະຕິທຸກເມື່ອ ຈະເລີນອະສຸພະຊານຢູ່
ຜູ້ນັ້ນແລ ຈັກເຮັດຕັນຫາໃຫ້ສິ້ນໄປໄດ້
ຈັກຕັດເຄື່ອງຜູກມັດແຫ່ງມານ[໓]ໄດ້

## ໘. ມາຣະວັດຖຸ
## ເລື້ອງມານ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ມານຜູ້ມີບາບ ດັ່ງນີ້)

[໓໕໑] ຜູ້ບັນລຸຄວາມສຳເລັດແລ້ວ[໔] ບໍ່ມີຄວາມສະດຸ້ງຢ້ານ

ປາສະຈາກຕັນຫາ ບໍ່ມີກິເລດພຽງດັ່ງເມີນ
ຕັດລູກສອນທີ່ນຳໄປສູ່ພົບໄດ້ຂາດແລ້ວ
ຮ່າງກາຍນີ້ຈຶ່ງເປັນຮ່າງກາຍສຸດທ້າຍ

[໓໕໒] ຜູ້ປາສະຈາກຕັນຫາ ໝົດຄວາມຍຶດໝັ້ນ
ສະຫຼາດໃນນິຣຸດຕິບົດ[໑]
ຮູ້ໝວດໝູ່ແລະເບື້ອງຕົ້ນເບື້ອງປາຍຂອງອັກສອນທັງຫຼາຍ
ຜູ້ນັ້ນແລຮຽກວ່າ ຜູ້ມີຮ່າງກາຍເປັນຮ່າງກາຍສຸດທ້າຍ
ຜູ້ມີປັນຍາຫຼາຍ ເປັນມະຫາບຸຣຸດ

## ໙. ອຸປະກາຊີວະກະວັດຖຸ

## ເລື້ອງອາຊີວົກຊື່ອຸປະກະ

(ພຣະຜູ້ມີພຣະພາກເຈົ້າ ເມື່ອທຳອິດຕັດສະຣູ້ປະທັບນັ່ງທີ່ຄ່ວງຕົ້ນໂພ ອາຊີວົກຊື່ອຸປະກະເຂົ້າມາຖາມພຣະອົງວ່າ ບວດເພື່ອໃຜ ໃຜເປັນສາດສະດາ ພຣະອົງຈຶ່ງຕັດພຣະຄາຖາ ດັ່ງນີ້)

[໓໕໓] ເຮົາເປັນຜູ້ຄອບງຳທຳທັງປວງ[໒] ຮູ້ທຳທັງປວງ[໓]
ບໍ່ໄດ້ເປິເປື້ອນໃນທຳທັງປວງ[໔] ລະທຳທັງປວງໄດ້[໕]
ລຸດພົ້ນຍ້ອນສິ້ນຕັນຫາ
ຕັດສະຣູ້ຍິ່ງເອງແລ້ວຈະເພິ່ງກ່າວອ້າງໃຜນໍ[໖]

## ໑໐. ສັກກະເທວະຣາຊະວັດຖຸ

## ເລື້ອງທ້າວສັກກະຈອມເທບ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ທ້າວສັກກະຈອມເທບແລະເຫຼົ່າເທວະດາ ດັ່ງນີ້)

[໓໕໔] ການໃຫ້ທຳ ຊະນະການໃຫ້ທັງປວງ
ຣົດແຫ່ງທຳ ຊະນະຣົດທັງປວງ
ຄວາມຍິນດີໃນທຳ ຊະນະຄວາມຍິນດີທັງປວງ
ຄວາມສິ້ນຕັນຫາ ຊະນະທຸກທັງປວງ[໗]

# ໑໑. ອະປຸດຕະກະເສດຖີປຸດຕະວັດຖຸ

## ເລື້ອງອະປຸດຕະກະເສດຖີບຸດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະເຈົ້າປະເສນທິໂກສົນ ດັ່ງນີ້)

[໓໕໕] ໂພຄະຊັບທັງຫຼາຍ ຍ່ອມທຳລາຍຄົນມີປັນຍາຊາມ
ແຕ່ຈະບໍ່ທຳລາຍຄົນທີ່ສະແຫວງຫາຝັ່ງ[໒]
ຍ້ອນຄວາມທະຍານຢາກໃນໂພຄະຊັບ
ຄົນມີປັນຍາຊາມຈຶ່ງທຳລາຍຕົນເອງຄືທຳລາຍຄົນອື່ນ

# ໑໘. ອັງກຸຣະວັດຖຸ

## ເລື້ອງອັງກຸຣະເທບພະບຸດ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ອັງກຸຣະເທບພະບຸດ ແລະອິນທະກະເທບພະບຸດ ດັ່ງນີ້)

[໓໕໖] ນາມີຫຍ້າເປັນໂທດ ໝູ່ຊົນມີຣາຄະເປັນໂທດ
ດັ່ງນັ້ນ ທານທີ່ໃຫ້ແກ່ຜູ້ປາສະຈາກຣາຄະ ຈຶ່ງມີຜົນຫຼາຍ

[໓໕໗] ນາມີຫຍ້າເປັນໂທດ ໝູ່ຊົນມີໂທສະເປັນໂທດ
ດັ່ງນັ້ນ ທານທີ່ໃຫ້ແກ່ຜູ້ປາສະຈາກໂທສະ ຈຶ່ງມີຜົນຫຼາຍ

[໓໕໘] ນາມີຫຍ້າເປັນໂທດ ໝູ່ຊົນມີໂມຫະເປັນໂທດ
ດັ່ງນັ້ນ ທານທີ່ໃຫ້ແກ່ຜູ້ປາສະຈາກໂມຫະ ຈຶ່ງມີຜົນຫຼາຍ

[໓໕໙] ນາມີຫຍ້າເປັນໂທດ ໝູ່ຊົນມີຄວາມຢາກເປັນໂທດ
ດັ່ງນັ້ນ ທານທີ່ໃຫ້ແກ່ຜູ້ປາສະຈາກຄວາມຢາກ ຈຶ່ງມີຜົນຫຼາຍ
(ນາມີຫຍ້າເປັນໂທດ ໝູ່ຊົນມີຕັນຫາເປັນໂທດ
ດັ່ງນັ້ນ ທານທີ່ໃຫ້ແກ່ຜູ້ປາສະຈາກຕັນຫາ ຈຶ່ງມີຜົນຫຼາຍ)

**ຕັນຫາວັກທີ ໒໔ ຈົບ**

# ໒໕. ພິກຂຸວັກ

## ໝວດວ່າດ້ວຍພິກຂຸ

## ໑. ປັນຈະພິກຂຸວັດຖຸ
### ເລື້ອງພິກຂຸ ໕ ອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸ ໕ ອົງ ຜູ້ສັງລວມທະວານ (ປ່ອງຕາມຮ່າງກາຍ)ອິງລະທະວານ ດັ່ງນີ້)

[໓໖໐] ການສັງລວມຕາ ເປັນການດີ
ການສັງລວມຫູ ເປັນການດີ
ການສັງລວມດັງ ເປັນການດີ
ການສັງລວມລີ້ນ ເປັນການດີ

[໓໖໑] ການສັງລວມກາຍ ເປັນການດີ
ການສັງລວມວາຈາ ເປັນການດີ
ການສັງລວມໃຈ ເປັນການດີ
ການສັງລວມທະວານທັງປວງ ເປັນການດີ
ພິກຂຸຜູ້ສັງລວມທະວານທັງປວງ ຍ່ອມພົ້ນຈາກທຸກທັງປວງໄດ້[໑]

## ໒. ຫັງສະຄາຕະກະພິກຂຸວັດຖຸ
### ເລື້ອງພິກຂຸຂ້າຫົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸຜູ້ຂ້າຫົງ ດັ່ງນີ້)

[໓໖໒] ບຸກຄົນຜູ້ສັງລວມມື[໒] ສັງລວມຕີນ ສັງລວມວາຈາ ສັງລວມຕົນ
ຍິນດີທຳພາຍໃນ[໓] ມີຈິດຕັ້ງໝັ້ນ ຢູ່ຜູ້ດຽວ ສັນໂດດ
ບັນດິດທັງຫຼາຍຮຽກວ່າ ພິກຂຸ

## ໓. ໂກກາລິກະວັດຖຸ
### ເລື້ອງພຣະໂກກາລິກະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໖໓] ພິກຂຸອົງໃດສັງລວມປາກ ເວົ້າໂດຍໃຊ້ມັນຕາ[໑]ສະເໝີ
ບໍ່ຟຸ້ງຊ່ານ ສະແດງແຕ່ອັດຖະ[໒]ແລະທຳ[໓] ທີ່ນັ້ນ
ພາສິດຂອງພິກຂຸນັ້ນມ່ວນ

## ໔. ທຳມາຣາມະເຖຣະວັດຖຸ

### ເລື້ອງພຣະເຖຣະຜູ້ຍິນດີໃນທຳ

[໓໖໔] ພິກຂຸມີທຳເປັນທີ່ມາຍິນດີ[໔] ຍິນດີແລ້ວໃນທຳ
ພິຈາລະນາ ຮີ່ນຕອງເຖິງທຳ ຣະນຶກເຖິງທຳຢູ່
ຍ່ອມບໍ່ເສື່ອມຈາກສັດທຳ[໕]

## ໕. ອັນຍະຕະຣະວິປັກຂະເສວະກະພິກຂຸວັດຖຸ

### ເລື້ອງພິກຂຸຜູ້ຄົບຝ່າຍຜິດອົງໃດອົງໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທີ່ເປັນຝັກຝ່າຍຂອງພຣະເທວະທັດ ດັ່ງນີ້)

[໓໖໕] ພິກຂຸບໍ່ຄວນດູໝິ່ນລາບຂອງຕົນ
ບໍ່ຄວນທ່ຽວປາຖະໜາລາບຂອງຄົນອື່ນ
ເມື່ອພິກຂຸປາຖະໜາລາບຂອງຄົນອື່ນ
ຍ່ອມບໍ່ບັນລຸສະມາທິ[໖]

[໓໖໖] ຖ້າພິກຂຸແມ່ນຈະມີລາບໜ້ອຍ ແຕ່ບໍ່ດູໝິ່ນລາບຂອງຕົນ
ເທວະດາທັງຫຼາຍຍ່ອມສັນເສີນພິກຂຸນັ້ນແລ
ວ່າເປັນຜູ້ມີອາຊີບມົດຈົດ ບໍ່ຂີ້ຄ້ານ

## ໖. ປັນຈັກຄະທາຍະກະພາມມະນະວັດຖຸ

### ເລື້ອງພາມຖວາຍທານອັນເລີດ ໕ ຢ່າງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພາມ ແລະນາງພາມມະນີຜູ້ຖວາຍທານອັນເລີດ ໕ ຢ່າງ ດັ່ງນີ້)

[໓໖໗] ຜູ້ໃດບໍ່ມີຄວາມຍຶດຖືໃນນາມຮູບ
ວ່າເປັນຂອງເຮົາ ໂດຍປະການທັງປວງ

ແລະບໍ່ເສົ້າໂສກ ຍ້ອນນາມຮູບຜັນແປໄປ
ຜູ້ນັ້ນແລ ເຮົາຮຽກວ່າ ພິກຂຸ[๑]

## ກ. ສຳພະຫຼະພິກຂຸວັດຖຸ
## ເລື້ອງພິກຂຸຫຼາຍອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໖໘] ພິກຂຸຜູ້ຢູ່ດ້ວຍເມດຕາ ເຫຼື້ອມໃສໃນພຸດທະສາດສະໜາ
ກໍຈະເພິ່ງບັນລຸສັນຕະບົດ[๒] ອັນເປັນທີ່ລະງັບສັງຂານເປັນສຸກ

[໓໖໙] ພິກຂຸ ທ່ານຈົ່ງວິດເຮືອ[๓]ນີ້
ເຮືອທີ່ທ່ານວິດແລ້ວຈັກເຖິງໄວ
ທ່ານຕັດຣາຄະ ໂທສະໄດ້ແລ້ວ
ຕໍ່ຈາກນັ້ນ ກໍຈັກບັນລຸນິບພານ

[໓໗໐] ພິກຂຸເພິ່ງຕັດສັງໂຍດເບື້ອງຕ່ຳ ໕ ເພິ່ງລະສັງໂຍດເບື້ອງສູງ ໕
ແລະເພິ່ງຈະເລີນອິນຊີ ໕ ໃຫ້ຍິ່ງຂຶ້ນໄປ
ພິກຂຸຜູ້ກ້າວລ່ວງກິເລດເຄື່ອງຂ້ອງ ໕[๑] ໄດ້ແລ້ວ
ເຮົາຮຽກວ່າ ຜູ້ຂ້າມໂອຄະໄດ້[๒]

[໓໗໑] ພິກຂຸ ທ່ານຈົ່ງເພ່ງພິນິດ ແລະຢ່າຜະໝາດ
ຈົ່ງຢ່າປ່ອຍຈິດຂອງທ່ານ ໃຫ້ວົນວຽນຢູ່ໃນກາມມະຄຸນ
ຢ່າເຜີກືນກ້ອນເຫຼັກແດງ (ໃນນະຣົກ)
ຢ່າຮ້ອນຮົນຮ່ຳໄຮຢູ່ວ່າ ນີ້ທຸກແທ້

[໓໗໒] ຊານ ຍ່ອມບໍ່ມີແກ່ຜູ້ບໍ່ມີປັນຍາ
ປັນຍາກໍຍ່ອມບໍ່ມີແກ່ຜູ້ບໍ່ມີຊານ
ຜູ້ມີທັງຊານແລະປັນຍານັ້ນແລ
ຈຶ່ງນັບວ່າຢູ່ໃກ້ນິບພານ

[໓໗໓] ພິກຂຸຜູ້ເຂົ້າໄປສູ່ເຮືອນວ່າງ[๓]
ມີຈິດສະງົບ ເຫັນແຈ້ງທຳໂດຍຖືກຕ້ອງ
ຍ່ອມເກີດຄວາມຍິນດີທີ່ບໍ່ແມ່ນເປັນຂອງຄົນທົ່ວໄປ

[໓໗໔] ຂະນະໃດ ພິກຂຸພິຈາລະນາເຫັນຄວາມເກີດ
ແລະຄວາມເສື່ອມຂອງຂັນທັງຫຼາຍ
ຂະນະນັ້ນ ທ່ານຍ່ອມໄດ້ຮັບປີຕິປາໂມດ
ເຊິ່ງເປັນອະມະຕະທຳສຳລັບຜູ້ຮູ້ທັງຫຼາຍ

[໓໗໕] ໃນອະມະຕະທຳນັ້ນ ທຳນີ້ຄື
ຄວາມສັງລວມອິນຊີ ຄວາມສັນໂດດ
ແລະຄວາມສັງລວມໃນປາຕິໂມກ
ເປັນເບື້ອງຕົ້ນຂອງພິກຂຸຜູ້ມີປັນຍາໃນສາດສະໜານີ້

[໓໗໖] ທ່ານຈົ່ງຄົບພິກຂຸທີ່ເປັນກັນລະຍານະມິດ
ມີອາຊີບບໍລິສຸດ ບໍ່ຂີ້ຄ້ານ
ຄວນທຳການປະຕິສັນຖານ ແລະສະຫຼາດໃນເລື້ອງມາລະຍາດ
ຍ້ອນປະຕິບັດຕາມຄຸນນະທຳດັ່ງກ່າວນັ້ນ
ທ່ານກໍຈັກຫຼາຍໄປດ້ວຍຄວາມປາໂມດ
ຈັກເຮັດບ່ອນສຸດແຫ່ງທຸກໄດ້

## ໗. ປັນຈະສະຕະພິກຂຸວັດຖຸ
## ເລື້ອງພິກຂຸ ໕໐໐ ອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໗໗] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງກຳຈັດຣາຄະແລະໂທສະຖິ້ມສາ
ຄືຕົ້ນມະລິກຳຈັດດອກທີ່ຫ່ຽວແຫ້ງ ສັນນັ້ນ

## ໘. ສັນຕະກາຍະເຖຣະວັດຖຸ
## ເລື້ອງພຣະສັນຕະກາຍເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໗໘] ພິກຂຸຜູ້ມີກາຍສະງົບ[໑] ມີວາຈາສະງົບ[໒]
ມີໃຈສະງົບ[໓] ມີຈິດຕັ້ງໝັ້ນດີແລ້ວ
ແລະເປັນຜູ້ລະໂລກາມິດໄດ້
ເຮົາຮຽກວ່າຜູ້ສະງົບລະງັບ

# ໑໐. ນັງຄະລະກູຕະເຖຣະວັດຖຸ

## ເລື້ອງພຣະນັງຄະລະກູຕະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໗໙] ພິກຂຸ ທ່ານຈົ່ງເຕືອນຕົນດ້ວຍຕົນເອງ
ຈົ່ງພິຈາລະນາເບິ່ງຕົນດ້ວຍຕົນເອງ
ຖ້າທ່ານຄຸ້ມຄອງຕົນເອງໄດ້ແລ້ວ ມີສະຕິ
ທ່ານກໍຈັກຢູ່ເປັນສຸກ

[໓໘໐] ຕົນແລ ເປັນທີ່ເພິ່ງຂອງຕົນ
ຕົນແລ ເປັນຄະຕິ[໑]ຂອງຕົນ
ຍ້ອນແນວນັ້ນ ທ່ານຈົ່ງສະຫງວນຕົນ[໒]ໃຫ້ດີ
ຄືພໍ່ຄ້າມ້າສະຫງວນມ້າພັນດີ ສັນນັ້ນ

# ໑໑. ວັກກະລິເຖຣະວັດຖຸ

## ເລື້ອງພຣະວັກກະລິເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະວັກກະລິເຖຣະ ດັ່ງນີ້)

[໓໘໑] ພິກຂຸຜູ້ຫຼາຍດ້ວຍຄວາມປາໂມດ
ເຫຼື້ອມໃສໃນພຸດທະສາດສະໜາ ເພິ່ງບັນລຸສັນຕະບົດ[໓]
ອັນເປັນທຳເຂົ້າໄປສະງົບລະງັບສັງຂານ ເປັນສຸກ[໔]

# ໑໒. ສຸມະນະສາມະເນຣະວັດຖຸ

## ເລື້ອງສຸມົນສາມະເນນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໘໒] ພິກຂຸໃດແລຍັງໜຸ່ມແໜ້ນ
ຍ່ອມປະກອບຂົນຂວາຍໃນພຸດທະສາດສະໜາ
ພິກຂຸນັ້ນຍ່ອມເຮັດໂລກນີ້ໃຫ້ສະຫວ່າງສະໄຫວ[໑]

ຄືດວງຈັນພົ້ນຈາກກ້ອນເພື້ອ ສັນນັ້ນ[໒]

**ພິກຂຸວັກທີ ໒໕ ຈົບ**

# ໒໖. ພາມມະນະວັກ

## ໝວດວ່າດ້ວຍພາມ

## ໑. ປະສາທະພະຫຸລະພາມມະນະວັດຖຸ

### ເລື້ອງພາມຜູ້ເຫຼື້ອມໃສຫຼາຍ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໘໓] ພານ[໑] ທ່ານຈົ່ງພະຍາຍາມຕັດກະແສ[໒]ໃຫ້ຂາດ
ຈົ່ງບັນເທົາກາມທັງຫຼາຍໃຫ້ໄດ້
ທ່ານຮູ້ຄວາມສິ້ນໄປແຫ່ງສັງຂານທັງຫຼາຍແລ້ວ
ກໍຈະຮູ້ແຈ້ງສະພາວະທີ່ປັດໄຈອັນໃດປຸງແຕ່ງບໍ່ໄດ້[໓]

## ໒. ສຳພະຫຸລະພິກຂຸວັດຖຸ

### ເລື້ອງພິກຂຸຫຼາຍອົງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸ ໓໐ ອົງ ດັ່ງນີ້)

[໓໘໔] ເມື່ອໃດ ພານເປັນຜູ້ເຖິງຝັ່ງໃນທຳທັງສອງ[໑]
ເມື່ອນັ້ນ ສັງໂຍຄະ[໒]ທັງໝົດຂອງເຂົາຜູ້ຮູ້ຢູ່
ຍ່ອມເຖິງຄວາມຕັ້ງຢູ່ບໍ່ໄດ້

## ໓. ມາຣະວັດຖຸ

### ເລື້ອງມານ

(ພຣະຜູ້ມີພຣະພາກເຈົ້າເມື່ອຕັດພຣະຄາຖານີ້ແກ່ມານຜູ້ຖາມເລື້ອງຝັ່ງ ດັ່ງນີ້)

[໓໘໕] ຜູ້ໃດບໍ່ມີຝັ່ງນີ້[໑] ບໍ່ມີຝັ່ງນັ້ນ[໒] ບໍມີທັງຝັ່ງນີ້ແລະຝັ່ງນັ້ນ

ເຮົາຮຽກຜູ້ນັ້ນເຊິ່ງປາສະຈາກຄວາມກະວົນກະວາຍ
ປອດຈາກກິເລດແລ້ວວ່າ ພາມ

## ໔. ອັນຍະຕະຣະພາມມະນະວັດຖຸ

### ເລື້ອງພາມຄົນໃດຄົນໜຶ່ງ

(ພຣະຜູ້ມີພຣະພາກເຈົ້າເມື່ອຕັດພຣະຄາຖານີ້ແກ່ພາມຜູ້ຖາມເລື້ອງພາມ ດັ່ງນີ້)

[໓໗໖] ຜູ້ເພ່ງພິນິດ ປາສະຈາກທຸລີ
ຢູ່ຕາມລຳພັງ ເຮັດກິດສຳເລັດແລ້ວ ໝົດອາສະວະ
ບັນລຸປະໂຫຍດສູງສຸດ[១]
ເຮົາຮຽກວ່າ ພາມ

## ໕. ອານັນທະເຖຣະວັດຖຸ

### ເລື້ອງພຣະອານົນເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພຣະອານົນເຖຣະ ດັ່ງນີ້)

[໓໗໗] ດວງອາທິດສ່ອງສະຫວ່າງສະເພາະກາງເວັນ
ດວງຈັນສ່ອງສະຫວ່າງສະເພາະກາງຄືນ
ກະສັດຊົງເຄື່ອງຮົບແລ້ວ ຈຶ່ງສະງ່າງາມ
ພາມເພ່ງພິນິດ ຈຶ່ງສະງ່າງາມ
ແຕ່ພຣະພຸດທະເຈົ້າຊົງສະງ່າງາມດ້ວຍພຣະອຳນາດ[៤]
ຕະຫຼອດທັງກາງເວັນແລະກາງຄືນ

## ໖. ອັນຍະຕະຣະປັບພະຊິຕະວັດຖຸ

### ເລື້ອງບັນພະຊິດຄົນໃດຄົນໜຶ່ງ

(ນັກບວດນອກພຣະພຸດທະສາດສະໜາ ທ່ານໜຶ່ງ ຖາມພຣະຜູ້ມີພຣະພາກເຈົ້າ ເລື້ອງບັນພະຊິດ ພຣະອົງຈຶ່ງຕັດພຣະຄາຖາ ດັ່ງນີ້)

[໓໗໘] ຜູ້ທີ່ລອຍບາບໄດ້ ເຮົາຮຽກວ່າ ພາມ

ຍ້ອນປະພຶດສະງົບ[๑] ເຮົາຮຽກວ່າ ສະມະນະ
ດັ່ງນັ້ນ ຜູ້ທີ່ກໍາຈັດມົນທິນ[๔]ຂອງຕົນໃຫ້ໝົດໄປໄດ້
ເຮົາຈຶ່ງຮຽກວ່າ ບັນພະຊິດ

## ໗. ສາຣີປຸດຕະເຖຣະວັດຖຸ
## ເລື້ອງພຣະສາຣີບຸດເຖຣະ

(ພຣະຜູ້ມີພຣະພາກເຈົ້າຊົງຜາຣົບພຣະສາຣີບຸດເຊິ່ງຖືກພາມທໍາຮ້າຍ ຈຶ່ງຕັດພຣະຄາຖາ ນີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໘໙] ພາມບໍ່ເພິ່ງທໍາຮ້າຍພາມ
ບໍ່ເພິ່ງຈອງເວນພາມຜູ້ທໍາຮ້າຍນັ້ນ
ໜ້າຕໍາໜິພາມຜູ້ທໍາຮ້າຍພາມ
ພາມທີ່ຈອງເວນຕອບນັ້ນ ໜ້າຕໍາໜິຍິ່ງກວ່າ
[໓໙໐] ຂໍ້ທີ່ພາມຫ້າມໃຈຈາກອາລົມອັນເປັນທີ່ຮັກ[๑]ທັງຫຼາຍໄດ້
ເປັນຄວາມປະເສີດບໍ່ໜ້ອຍເລີຍ
ໃຈທີ່ມີຄວາມບຽດບຽນ ກັບຈາກວັດຖຸໃດ ໆ
ຄວາມທຸກກໍຍ່ອມສະງົບລະງັບຈາກວັດຖຸນັ້ນ ໆ

## ໘. ມະຫາປະຊາປະຕີໂຄຕະມີວັດຖຸ
## ເລື້ອງພຣະນາງມະຫາປະຊາບໍດີໂຄຕະມີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸນີທັງຫຼາຍ ດັ່ງນີ້)

[໓໙໑] ຜູ້ບໍ່ມີກໍາຊົ່ວ[๑]ທາງກາຍ ວາຈາ ແລະໃຈ
ສັງລວມລະວັງໄດ້ຄົບທັງ ໓ ທະວານ
ເຮົາຮຽກວ່າ ພາມ

## ໙. ສາຣີປຸດຕະເຖຣະວັດຖຸ
## ເລື້ອງພຣະສາຣີບຸດເຖຣະ

(ພຣະຜູ້ມີພຣະພາກເຈົ້າຊົງຜາຣົບພຣະສາຣີບຸດ ນອບນ້ອມທິດທີ່ພຣະອັດສະຊິເຖຣະຢູ່ ຈຶ່ງຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໙໒] ບຸກຄົນຮູ້ແຈ້ງທຳທີ່ພຣະສຳມາສຳພຸດທະເຈົ້າຊົງສະແດງແລ້ວ
ຈາກອາຈານໃດ
ຄວນນອບນ້ອມອາຈານນັ້ນໂດຍເຄົາລົບ
ຄືພາມ[໑]ນອບນ້ອມໄຟທີ່ບູຊາ ສັນນັ້ນ

## ໑໐. ຊະຕິລະພາມມະນະວັດຖຸ

### ເລື້ອງພາມຊະດົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພາມຊະດົນຜູ້ຖາມເລື້ອງພາມ ດັ່ງນີ້)

[໓໙໓] ຄົນເປັນພາມ ບໍ່ແມ່ນຍ້ອນເກົ້າຊະດາ
ບໍ່ແມ່ນຍ້ອນໂຄດ ບໍ່ແມ່ນຍ້ອນຊາດກຳເນີດ
ແຕ່ສັດຈະ[໑]ແລະທຳ[໒]ມີຢູ່ໃນຜູ້ໃດ
ຜູ້ນັ້ນ ເປັນຜູ້ສະອາດ ແລະຜູ້ນັ້ນ ເປັນພາມ

## ໑໑. ກຸຫະກະພາມມະນະວັດຖຸ

### ເລື້ອງພາມຕົວະ

(ພຣະຜູ້ມີພຣະພາກເຈົ້າຊົງຜາຣົບພາມຕົວະມີຂໍ້ວັດປະຕິບັດດັ່ງໂຕເຈຍ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໙໔] ເຈົ້າຄົນມີປັນຍາຊາມ ການເກົ້າຊະດາ ການນຸ່ງຫົ່ມໜັງເສືອ
ຈະມີປະໂຫຍດອັນໃດສຳລັບເຈົ້າ
ພາຍນອກຂອງເຈົ້າຜຸດຜ່ອງກ້ຽງມື່ນ
ແຕ່ພາຍໃນຂອງເຈົ້າຮົກເຮື້ອ[໑]

## ໑໒. ກິສາໂຄຕະມີວັດຖຸ

### ເລື້ອງນາງກິສາໂຄຕະມີ

(ພຣະຜູ້ມີພຣະພາກເຈົ້າຊົງຜາຣົບນາງກິສາໂຄຕະມີຈຶ່ງຕັດພຣະຄາຖານີ້ແກ່ທ້າວສັກກະຈອມເທບ ດັ່ງນີ້)

[໓໙໘] ຜູ້ນຸ່ງຫົ່ມຜ້າບັງສຸກຸນ
ຈ່ອຍຜອມ ມີເສັ້ນເອັນຜາກົດທົ່ວຮ່າງ
ເພ່ງພິນິດຢູ່ໃນປ່າຜູ້ດຽວ
ເຮົາຮຽກວ່າ ພາມ

# ໑໓. ອັນຍະຕະຣະພາມມະນະວັດຖຸ

## ເລື້ອງພາມຄົນໃດຄົນໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພາມຄົນໜຶ່ງ ດັ່ງນີ້)

[໓໙໙] ເຮົາບໍ່ຮຽກບຸກຄົນຜູ້ຖືກຳເນີດ
ເກີດໃນທ້ອງມານດາວ່າ ພາມ
ຖ້າເຂົາຍັງມີກິເລດເຄື່ອງກັງວົນຢູ່
ເຂົາເປັນພຽງຜູ້ຊື່ວ່າ ໂພວາທີ[๑]ທໍ່ນັ້ນ
ເຮົາຮຽກຜູ້ໝົດກິເລດເຄື່ອງກັງວົນ
ໝົດຄວາມຍຶດໝັ້ນຖືໝັ້ນທໍ່ນັ້ນວ່າ ພາມ[๒]

# ໑໔. ອຸກຄະເສນະວັດຖຸ

## ເລື້ອງນາຍອຸກຄະເສນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໐໐] ຜູ້ຕັດສັງໂຍດໄດ້ໝົດສິ້ນ ບໍ່ສະດຸ້ງ[๓]
ຜູ້ລ່ວງພົ້ນກິເລດເຄື່ອງຂ້ອງ[๔]ໄດ້
ຜູ້ປາສະຈາກໂຍຄະ[๕]
ເຮົາຮຽກວ່າ ພາມ

# ໑໕. ທະເວພາມມະນະວັດຖຸ

## ເລື້ອງພາມ ໔ ຄົນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸປະມານ ໕໐໐ ອົງ ດັ່ງນີ້)

[໓໙໗] ຜູ້ຕັດຊະເນາະ ເຊືອກໜັງ ແລະເງື່ອນ[໑]
ພ້ອມທັງສາຍຮັດໄດ້ ຖອດຫຼີ້ມໄລ່[໒]ເປັນຜູ້ຕັດສະຮູ້ແລ້ວ
ເຮົາຮຽກວ່າ ພາມ

## ໑໙. ອັກໂກສະກະພາຣະທະວາຊະວັດຖຸ

### ເລື້ອງອັກໂກສະກະພາຣະທະວາຊະພາມ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໓໙໙] ຜູ້ບໍ່ປະທຸດສະຮ້າຍ ອົດກັ້ນຄໍາດ່າ
ການຂ້າ ແລະການຄຸມຂັງໄດ້
ມີຂັນຕິເປັນພະລັງ ມີຂັນຕິເປັນກໍາລັງພົນ
ເຮົາຮຽກວ່າ ພາມ

## ໑໗. ສາຣີປຸດຕະເຖຣະວັດຖຸ

### ເລື້ອງພຣະສາຣີບຸດເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໐໐] ຜູ້ບໍ່ມັກໂກດ ມີສີນ ມີຂໍ້ວັດປະຕິບັດ
ບໍ່ມີຕັນຫາເຄື່ອງຟູຂຶ້ນ ເຝິກຕົນໄດ້ແລ້ວ
ມີສະຣີຣະເປັນຮ່າງກາຍສຸດທ້າຍ
ເຮົາຮຽກວ່າ ພາມ

## ໑໘. ອຸບປະລະວັນນາເຖຣີວັດຖຸ

### ເລື້ອງພຣະອຸບົນວັນນາເຖຣີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໐໑] ຜູ້ໃດບໍ່ຕິດໃນກາມທັງຫຼາຍ
ຄືນໍ້າບໍ່ຕິດຢູ່ເທິງໃບບົວ
ຄືໄນຜັກກາດບໍ່ຕິດຢູ່ເທິງປາຍເຫຼັກແຫຼມ
ເຮົາຮຽກຜູ້ນັ້ນວ່າ ພາມ

## ໑໙. ອັນຍະຕະຣະພາມມະນະວັດຖຸ
## ເລື້ອງພາມຄົນໃດຄົນໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພາມຄົນໜຶ່ງ ດັ່ງນີ້)

[໔໐໘] ຜູ້ໃດໃນສາດສະໜານີ້ ຮູ້ແຈ້ງຄວາມສິ້ນທຸກຂອງຕົນ
ປົງພາຣະໄດ້ແລ້ວ ປາສະຈາກໂຍຄະ
ເຮົາຮຽກຜູ້ນັ້ນວ່າ ພາມ

## ໘໐. ເຂມາພິກຂຸນີວັດຖຸ
## ເລື້ອງພຣະເຂມາພິກຂຸນີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ທ້າວສັກກະຈອມເທບ ແລະເທວະດາທັງຫຼາຍ ດັ່ງນີ້)

[໔໐໙] ຜູ້ມີປັນຍາເລິກເຊິ່ງ ເປັນປາດ
ສະຫຼາດໃນທາງແລະບໍ່ແມ່ນທາງ[1] ບັນລຸປະໂຫຍດສູງສຸດ
ເຮົາຮຽກວ່າ ພາມ

## ໘໑. ປັບພາຣະວາສີຕິດສະເຖຣະວັດຖຸ

## ເລື້ອງພຣະຕິດສະເຖຣະຜູ້ຢູ່ທີ່ເງື້ອມພູ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໐໘] ຜູ້ບໍ່ຄຸກຄີ[2]ກັບຄົນ ໒ ຈຳພວກ
ຄື ຄະລືຫັດ ແລະບັນພະຊິດ
ບໍ່ມີຄວາມອາໄລທ່ຽວໄປ ມີຄວາມປາຖະໜາໜ້ອຍ
ເຮົາຮຽກວ່າ ພາມ

## ໘໒. ອັນຍະຕະຣະພິກຂຸວັດຖຸ

## ເລື້ອງພິກຂຸອົງໃດອົງໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໐໕] ຜູ້ໃດລະວາງການລົງໂທດໃນສັດທັງຫຼາຍ
ບໍ່ວ່າຈະເປັນສັດທີ່ຍັງຕື່ນຕົກໃຈ[໑]ແລະສັດທີ່ໝັ້ນຄົງ[໒]
ບໍ່ຂ້າເອງ ບໍ່ໃຊ້ໃຫ້ຄົນອື່ນຂ້າ
ເຮົາຮຽກຜູ້ນັ້ນວ່າ ພາມ

## ໘໓. ສາມະເນຣະວັດຖຸ

### ເລື້ອງສາມະເນນ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໐໖] ຜູ້ບໍ່ມຸ້ງຮ້າຍໃນໝູ່ຄົນຜູ້ມຸ້ງຮ້າຍ
ຜູ້ສະງົບໃນໝູ່ຄົນຜູ້ມັກຫາເລື້ອງໃສ່ຕົນ
ຜູ້ບໍ່ຖືໝັ້ນໃນໝູ່ຄົນຜູ້ຖືໝັ້ນ
ເຮົາຮຽກວ່າ ພາມ

## ໘໔. ມະຫາປັນຖະກະເຖຣະວັດຖຸ

### ເລື້ອງພຣະມະຫາປັນຖະກະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໐໗] ຜູ້ໃດເຮັດຣາຄະ ໂທສະ ໂມຫະ ມານະ ແລະມັກຂະໃຫ້ຕົກໄປ[໑]
ຄືໃນຜັກກາດຕົກໄປຈາກປາຍເຫຼັກແຫຼມ
ເຮົາຮຽກຜູ້ນັ້ນວ່າ ພາມ

## ໘໕. ປິລິນທະວັດສະເຖຣະວັດຖຸ

### ເລື້ອງພຣະປິລິນທະວັດສະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໐໘] ຜູ້ກ່າວຄຳທີ່ບໍ່ຫຍາບຄາຍ ສື່ຄວາມໝາຍໄດ້
ເປັນຄຳຈິງ ບໍ່ເປັນເຫດໃຫ້ໃຜໆ ຂັດເຄືອງ
ເຮົາຮຽກວ່າ ພາມ

## ໒໕. ອັນຍະຕະຣະພິກຂຸວັດຖຸ

### ເລື້ອງພິກຂຸອົງໃດອົງໜຶ່ງ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໐໙] ຜູ້ໃດໃນໂລກນີ້ ບໍ່ຖືເອົາສິ່ງຂອງທີ່ເຂົາບໍ່ໄດ້ໃຫ້
ບໍ່ວ່າຍາວຫຼືສັ້ນ ນ້ອຍຫຼືໃຫຍ່ ງາມບໍ່ງາມ
ເຮົາຮຽກຜູ້ນັ້ນວ່າ ພາມ

## ໒໖. ສາຣີປຸດຕະເຖຣະວັດຖຸ

### ເລື້ອງພຣະສາຣີບຸດເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໑໐] ຜູ້ໃດບໍ່ມີຄວາມຫວັງ໑ໃນໂລກນີ້ແລະໂລກໜ້າ
ປາສະຈາກຄວາມຫວັງ ປາສະຈາກໂຍຄະ
ເຮົາຮຽກຜູ້ນັ້ນວ່າ ພາມ

## ໒໗. ມະຫາໂມກຄັນລານະວັດຖຸ

### ເລື້ອງພຣະມະຫາໂມກຄັນລານະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໑໑] ຜູ້ໃດບໍ່ມີຄວາມອາໄລ໒ ໝົດຄວາມສົງໄສຍ້ອນຮູ້ແຈ້ງ
ຢັ່ງລົງສູ່ອະມະຕະ໓ ບັນລຸແລ້ວ
ເຮົາຮຽກຜູ້ນັ້ນວ່າ ພາມ

## ໒໘. ເຣວະຕະເຖຣະວັດຖຸ

### ເລື້ອງພຣະເຣວະຕະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໑໒]　ຜູ້ໃດໃນໂລກນີ້ ລະບຸນແລະບາບທັງສອງໄດ້
ພົ້ນຈາກກິເລດເຄື່ອງຂ້ອງໄດ້ ບໍ່ເສົ້າໂສກ
ປາສະຈາກກິເລດຄືທຸລີ ເປັນຜູ້ບໍລິສຸດ
ເຮົາຮຽກຜູ້ນັ້ນວ່າ ພາມ

## ໓໐. ຈັນທາພະເຖຣະວັດຖຸ

### ເລື້ອງພຣະຈັນທາພະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໑໓]　ຜູ້ບໍລິສຸດຄືຈັນແຈ່ມ
ມີຈິດຜ່ອງໃສ ບໍ່ຂຸ່ນມົວ[໑] ເປັນຜູ້ສິ້ນຄວາມເພີດເພີນໃນພົບ[໒]
ເຮົາຮຽກວ່າ ພາມ

## ໓໑. ສີວະລີເຖຣະວັດຖຸ

### ເລື້ອງພຣະສີວະລີເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໑໔]　ຜູ້ໃດກ້າວພົ້ນທາງອ້ອມ[໓] ທາງຫຼົ່ມ[໔]
ສົງສານ[໕]ແລະໂມຫະໄດ້ແລ້ວ
ຂ້າມໄປເຖິງຝັ່ງແລ້ວ ຈະເລີນຊານ
ບໍ່ຫວັ່ນໄຫວ ໝົດຄວາມສົງໄສ
ດັບເຢັນ ຍ້ອນບໍ່ຖືໝັ້ນ
ເຮົາຮຽກຜູ້ນັ້ນວ່າ ພາມ

## ໓໒. ສຸນທະຣະສະມຸດທະເຖຣະວັດຖຸ

### ເລື້ອງພຣະສຸນທອນສະມຸດເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໑໕]　ຜູ້ໃດໃນໂລກນີ້ ລະກາມໄດ້ແລ້ວ

ອອກບວດເປັນບັນພະຊິດ
ເປັນຜູ້ສິ້ນການແລະພົບ
ເຮົາຮຽກຜູ້ນັ້ນວ່າ ພາມ

## ໓໓. ຊະຕິລະວັດຖຸ

### ເລື້ອງພຣະຊະດິນເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໑໘] ຜູ້ໃດໃນໂລກນີ້ ລະຕັນຫາໄດ້ຂາດ
ອອກບວດເປັນບັນພະຊິດ
ເປັນຜູ້ສິ້ນຕັນຫາແລະພົບ
ເຮົາຮຽກຜູ້ນັ້ນວ່າ ພາມ

## ໓໔. ໂຊຕິກະເຖຣະວັດຖຸ

### ເລື້ອງພຣະໂຊຕິກະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໑໘] ຜູ້ໃດໃນໂລກນີ້ ລະຕັນຫາໄດ້ຂາດ
ອອກບວດເປັນບັນພະຊິດ
ເປັນຜູ້ສິ້ນຕັນຫາແລະພົບ
ເຮົາຮຽກຜູ້ນັ້ນວ່າ ພາມ

## ໓໕. ປະຖົມນະຕະປຸບພະກະເຖຣະວັດຖຸ

### ເລື້ອງພຣະເຖຣະຜູ້ເຄີຍເປັນນັກຟ້ອນອົງທີ ໑

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໑໗] ຜູ້ລະກິເລດເຄື່ອງປະກອບອັນເປັນຂອງມະນຸດໄດ້[໑]
ລ່ວງພົ້ນກິເລດເຄື່ອງປະກອບອັນເປັນທິບໄດ້ແລ້ວ
ເປັນຜູ້ປາສະຈາກໂຍຄະ[໒]ທັງປວງ

ເຮົາຮຽກຜູ້ນັ້ນວ່າ ພາມ

## ໓໖. ທຸຕິຍະນະຕະປຸບພະກະເຖຣະວັດຖຸ

## ເລື້ອງພຣະເຖຣະຜູ້ເຄີຍເປັນນັກຟ້ອນອົງທີ ໒

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໑໘] ຜູ້ລະທັງຄວາມຍິນດີ[໓]ແລະຄວາມບໍ່ຍິນດີ[໔]
ເປັນຜູ້ເຢືອກເຢັນ ໝົດອຸປະທິກິເລດ
ຄອບງຳໂລກທັງໝົດ[໕] ເປັນຜູ້ແກ່ກ້າ
ເຮົາຮຽກວ່າ ພາມ

## ໓໗. ວັງຄີສະເຖຣະວັດຖຸ

## ເລື້ອງພຣະວັງຄີສະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໑໙] ຜູ້ໃດຮູ້ການຈຸຕິແລະການອຸບັດ
ຂອງສັດທັງຫຼາຍໂດຍປະການທັງປວງ
ເຮົາຮຽກຜູ້ນັ້ນ ເຊິ່ງເປັນຜູ້ບໍ່ຕິດຂ້ອງ
ໄປດີແລ້ວ ແລະຕັດສະຮູ້ແລ້ວວ່າ ພາມ

[໔໒໐] ຜູ້ໃດມີຄະຕິທີ່ເທວະດາ ຄົນທັບ ແລະມະນຸດ ກໍຮູ້ບໍ່ໄດ້
ເຮົາຮຽກຜູ້ນັ້ນເຊິ່ງເປັນອະຣະຫັນຕະຂີນາສົບວ່າ ພາມ

## ໓໘. ທຳມະທິນນາເຖຣີວັດຖຸ

## ເລື້ອງພຣະທຳມະທິນນາເຖຣີ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ວິສາຂະອຸປາສົກ ອະດີດສາມີຂອງພຣະທຳມະທິນນາເຖຣີ ດັ່ງນີ້)

[໔໒໑] ຜູ້ໃດບໍ່ມີກິເລດເຄື່ອງກັງວົນ[໑]
ທັງໃນອະດີດ ປັດຈຸບັນ ແລະອະນາຄົດ

ເຮົາຮຽກຜູ້ນັ້ນເຊິ່ງເປັນຜູ້ບໍ່ມີກິເລດເຄື່ອງກັງວົນ
ໝົດຄວາມຍຶດໝັ້ນຖືໝັ້ນວ່າ ພາມ

## ໓໙. ອັງຄຸລິມາລະເຖຣະວັດຖຸ

### ເລື້ອງພຣະອົງຄຸລິມານເຖຣະ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ພິກຂຸທັງຫຼາຍ ດັ່ງນີ້)

[໔໔໔] ຜູ້ອົງອາດ ຜູ້ປະເສີດ ຜູ້ແກ່ກ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຜູ້ຊະນະແລ້ວ
ຜູ້ບໍ່ຫວັ່ນໄຫວ ຜູ້ຊໍາຮະແລ້ວ ແລະຕັດສະຣູ້ແລ້ວ
ເຮົາຮຽກວ່າ ພາມ

## ໔໐. ເທວະຫິຕະພາມມະນະວັດຖຸ

### ເລື້ອງເທວະຫິຕະພາມ

(ພຣະຜູ້ມີພຣະພາກເຈົ້າ ຕັດພຣະຄາຖານີ້ແກ່ເທວະຫິຕະພາມ ດັ່ງນີ້)

[໔໔໓] ຜູ້ໃດຣະນຶກອະດີດຊາດໄດ້໑ ເຫັນສະຫວັນແລະອະບາຍ
ບັນລຸພາວະທີ່ສິ້ນສຸດການເກີດ໒
ໝົດພາລະກິດແຍ້ອນຮູ້ຍິ່ງ ເປັນມຸນີ
ເປັນຜູ້ຢູ່ຈົບພົມມະຈັນແລ້ວ
ເຮົາຮຽກຜູ້ນັ້ນວ່າ ພາມ

**ພາມມະນະວັກທີ ໒໖ ຈົບ**

## ລວມວັກໃນທໍາມະບົດ

໑. ຍະມະກະວັກ
໒. ອັບປະມາທະວັກ
໓. ຈິດຕະວັກ
໔. ປຸບຜະວັກ
໕. ພາລະວັກ
໖. ປັນທິຕະວັກ
໗. ອະຣະຫັນຕະວັກ
໘. ສະຫັດສະວັກ
໙. ປາປະວັກ
໑໐. ທັນທະວັກ

| | |
|---|---|
| ໑໑. ຊະຣາວັກ | ໑໘. ອັດຕະວັກ |
| ໑໒. ໂລກະວັກ | ໑໙. ພຸດທະວັກ |
| ໑໕. ສຸຂະວັກ | ໑໖. ປິຍະວັກ |
| ໑໗. ໂກທະວັກ | ໑໙. ມະລະວັກ |
| ໑໙. ທຳມັດຖະວັກ | ໒໐. ມັກຄະວັກ |
| ໒໑. ປະກິນນະກະວັກ | ໒໒. ນິຣະຍະວັກ |
| ໒໓. ນາຄະວັກ | ໒໔. ຕັນຫາວັກ |
| ໒໕. ພິກຂຸວັກ | ໒໖. ພາມມະນະວັກ |

ລວມເປັນ ໒໖ ວັກ ອັນພຣະພຸດທະເຈົ້າ ຜູ້ເປັນເຜົ່າພັນແຫ່ງພຣະອາທິດ ຊົງສະແດງໄວ້ໄວ້ແລ້ວຂ້າງເທິງນັ້ນແລ

## ລວມພຣະຄາຖາໃນທຳມະບົດ

| | | | |
|---|---|---|---|
| ຍະມະກະວັກ | ມີ ໒໐ ຄາຖາ | ອັບປະມາທະວັກ | ມີ ໑໒ ຄາຖາ |
| ຈິດຕະວັກ | ມີ ໑໑ ຄາຖາ | ປຸບຜະວັກ | ມີ ໑໖ ຄາຖາ |
| ພາລະວັກ | ມີ ໑໖ ຄາຖາ | ປັນທິຕະວັກ | ມີ ໑໔ ຄາຖາ |
| ອະຣະຫັນຕະວັກ | ມີ ໑໐ ຄາຖາ | ສະຫັດສະວັກ | ມີ ໑໖ ຄາຖາ |
| ປາປະວັກ | ມີ ໑໓ ຄາຖາ | ທັນທະວັກ | ມີ ໑໗ ຄາຖາ |
| ຊະຣາວັກ | ມີ ໑໑ ຄາຖາ | ອັດຕະວັກ | ມີ ໑໐ ຄາຖາ |
| ໂລກະວັກ | ມີ ໑໒ ຄາຖາ | ພຸດທະວັກ | ມີ ໑໘ ຄາຖາ |
| ສຸຂະວັກ | ມີ ໑໒ ຄາຖາ | ປິຍະວັກ | ມີ ໑໒ ຄາຖາ |
| ໂກທະວັກ | ມີ ໑໔ ຄາຖາ | ມະລະວັກ | ມີ ໒໑ ຄາຖາ |
| ທຳມັດຖະວັກ | ມີ ໑໗ ຄາຖາ | ມັກຄະວັກ | ມີ ໑໗ ຄາຖາ |
| ປະກິນນະກະວັກ | ມີ ໑໖ ຄາຖາ | ນິຣະຍະວັກ | ມີ ໑໔ ຄາຖາ |
| ນາຄະວັກ | ມີ ໑໔ ຄາຖາ | ຕັນຫາວັກ | ມີ ໒໖ ຄາຖາ |
| ພິກຂຸວັກ | ມີ ໒໓ ຄາຖາ | ພາມມະນະວັກ | ມີ ໔໑ ຄາຖາ |

ລວມພຣະຄາຖາທັງໝົດ ທີ່ ພຣະພຸດທະເຈົ້າ ຜູ້ເປັນເຜົ່າພັນແຫ່ງພຣະອາທິດ ຊົງສະແດງໄວ້ໃນນິບາດ ໃນທຳມະບົດນີ້ ໔໒໓ ພຣະຄາຖາ

**ທຳມະບົດ ຈົບ**

# ໑. ໂພທິວັກ

## ໝວດວ່າດ້ວຍເຫດການທຳອິດຕັດສະຮູ້

## ໑. ປະຖົມໂພທິສູດ[໑]

### ວ່າດ້ວຍເຫດການທຳອິດຕັດສະຮູ້ ສູດທີ ໑

[໑] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ເມື່ອທຳອິດຕັດສະຮູ້ ປະທັບຢູ່ຄ່ວງຕົ້ນໂພ ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ປະທັບນັ່ງ ໂດຍບັນລັງດຽວ໌ສະເຫວີຍວິມຸດຕິສຸກຢູ່ເປັນເວລາ ໗ ມື້ ເມື່ອລ່ວງໄປ ໗ ມື້ ພຣະຜູ້ມີພຣະພາກເຈົ້າຊົງອອກຈາກສະມາທິນັ້ນແລ້ວ ຊົງພິຈາລະນາປະຕິດຈະສະມຸບບາດ (ທຳທີ່ອາໄສກັນເກີດຂຶ້ນ) ໂດຍອະນຸໂລມຢ່າງລະອຽດ ຕະຫຼອດປະຖົມມະຍາມແຫ່ງຣາຕີວ່າ

### ປະຕິດຈະສະມຸບບາດໂດຍອະນຸໂລມ

ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ ຄື

| | |
|---|---|
| ຍ້ອນອະວິດຊາເປັນປັດໄຈ | ສັງຂານຈຶ່ງມີ |
| ຍ້ອນສັງຂານເປັນປັດໄຈ | ວິນຍານຈຶ່ງມີ |
| ຍ້ອນວິນຍານເປັນປັດໄຈ | ນາມຮູບຈຶ່ງມີ |
| ຍ້ອນນາມຮູບເປັນປັດໄຈ | ສະລາຍະຕະນະຈຶ່ງມີ |
| ຍ້ອນສະລາຍະຕະນະເປັນປັດໄຈ | ຜັດສະຈຶ່ງມີ |
| ຍ້ອນຜັດສະເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນເວທະນາເປັນປັດໄຈ | ຕັນຫາຈຶ່ງມີ |
| ຍ້ອນຕັນຫາເປັນປັດໄຈ | ອຸປາທານຈຶ່ງມີ |
| ຍ້ອນອຸປາທານເປັນປັດໄຈ | ພົບຈຶ່ງມີ |
| ຍ້ອນພົບເປັນປັດໄຈ | ຊາດຈຶ່ງມີ |

ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຈຶ່ງມີ ກອງທຸກທັງມວນນີ້ ມີການເກີດຂຶ້ນດ້ວຍອາການແບບນີ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນ ວ່າ

### ພຸດທະອຸທານ

ເມື່ອໃດແລ ທຳທັງຫຼາຍ[໔] ຜາກົດແກ່ພາມ[໓]
ຜູ້ມີຄວາມພຽນ ເພ່ງຢູ່
ເມື່ອນັ້ນ ຄວາມສົງໄສທັງປວງຂອງພາມນັ້ນຍ່ອມສິ້ນໄປ
ຍ້ອນໄດ້ຮູ້ທຳພ້ອມທັງເຫດ[໕]

**ປະຖົມໂພທິສູດທີ ໑ ຈົບ**

## ໒. ທຸຕິຍະໂພທິສູດ

### ວ່າດ້ວຍເຫດການທຳອິດຕັດສະຮູ້ ສູດທີ ໒

[໒] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ເມື່ອທຳອິດຕັດສະຮູ້ ປະທັບຢູ່ຄ່ວງຕົ້ນໂພ ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ປະທັບນັ່ງ ໂດຍບັນລັງດຽວ ສະເຫວີຍ ວິມຸດຕິສຸກຢູ່ເປັນເວລາ ໗ ມື້ ເມື່ອລ່ວງໄປ ໗ ມື້ ພຣະຜູ້ມີພຣະພາກເຈົ້າຊົງອອກຈາກສະມາທິນັ້ນ ແລ້ວ ຊົງພິຈາລະນາປະຕິດຈະສະມຸບບາດ ໂດຍປະຕິໂລມຢ່າງລະອຽດຕະຫຼອດມັດຊິມະຍາມແຫ່ງຣາຕີວ່າ

### ປະຕິດຈະສະມຸບບາດໂດຍປະຕິໂລມ

ຍ້ອນເມື່ອສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບ ສິ່ງນີ້ຈຶ່ງດັບ ຄື

ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ
ຍ້ອນສັງຂານດັບ ວິນຍານຈຶ່ງດັບ
ຍ້ອນວິນຍານດັບ ນາມຮູບຈຶ່ງດັບ
ຍ້ອນນາມຮູບດັບ ສະລາຍະຕະນະຈຶ່ງດັບ
ຍ້ອນສະລາຍະຕະນະດັບ ຜັດສະຈຶ່ງດັບ
ຍ້ອນຜັດສະດັບ ເວທະນາຈຶ່ງດັບ
ຍ້ອນເວທະນາດັບ ຕັນຫາຈຶ່ງດັບ

ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ
ຍ້ອນອຸປາທານດັບ ພົບຈຶ່ງດັບ
ຍ້ອນພົບດັບ ຊາດຈຶ່ງດັບ
ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດ ຈຶ່ງດັບ ກອງທຸກທັງມວນນີ້ ມີການດັບດ້ວຍອາການແບບນີ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ[១]

ເມື່ອໃດແລ ທຳທັງຫຼາຍຜາກົດແກ່ພາມ
ຜູ້ມີຄວາມພຽນ ເພ່ງຢູ່
ເມື່ອນັ້ນ ຄວາມສົງໄສທັງປວງຂອງພາມນັ້ນຍ່ອມສິ້ນໄປ
ຍ້ອນໄດ້ຮູ້ຄວາມສິ້ນໄປແຫ່ງປັດໄຈທັງຫຼາຍ

**ທຸຕິຍະໂພທິສູດທີ ໘ ຈົບ**

# ໓. ຕະຕິຍະໂພທິສູດ

## ວ່າດ້ວຍເຫດການທຳອິດຕັດສະຣູ້ ສູດທີ ໓

[໓] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ເມື່ອທຳອິດຕັດສະຣູ້ ປະທັບຢູ່ຄ່ວງຕົ້ນໂພ ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງໂດຍບັນລັງດຽວ ສະເຫວີຍວິມຸດຕິສຸກຢູ່ເປັນເວລາ ໗ ມື້ ເມື່ອລ່ວງໄປ ໗ ມື້ ພຣະຜູ້ມີພຣະພາກເຈົ້າຊົງອອກຈາກສະມາທິນັ້ນແລ້ວ ຊົງພິຈາລະນາປະຕິດຈະສະມຸບບາດໂດຍອະນຸໂລມແລະປະຕິໂລມຢ່າງລະອຽດ ຕະຫຼອດປັດສິມມະຍາມແຫ່ງຣາຕີວ່າ

## ປະຕິດຈະສະມຸບບາດໂດຍອະນຸໂລມ

ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ
ຍ້ອນເມື່ອສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບ ສິ່ງນີ້ຈຶ່ງດັບ ຄື

| | |
|---|---|
| ຍ້ອນອະວິດຊາເປັນປັດໄຈ | ສັງຂານຈຶ່ງມີ |
| ຍ້ອນສັງຂານເປັນປັດໄຈ | ວິນຍານຈຶ່ງມີ |
| ຍ້ອນວິນຍານເປັນປັດໄຈ | ນາມຮູບຈຶ່ງມີ |
| ຍ້ອນນາມຮູບເປັນປັດໄຈ | ສະລາຍະຕະນະຈຶ່ງມີ |
| ຍ້ອນສະລາຍະຕະນະເປັນປັດໄຈ | ຜັດສະຈຶ່ງມີ |
| ຍ້ອນຜັດສະເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນເວທະນາເປັນປັດໄຈ | ຕັນຫາຈຶ່ງມີ |
| ຍ້ອນຕັນຫາເປັນປັດໄຈ | ອຸປາທານຈຶ່ງມີ |
| ຍ້ອນອຸປາທານເປັນປັດໄຈ | ພົບຈຶ່ງມີ |
| ຍ້ອນພົບເປັນປັດໄຈ | ຊາດຈຶ່ງມີ |
| ຍ້ອນຊາດເປັນປັດໄຈ | ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຈຶ່ງມີ |

ກອງທຸກທັງມວນນີ້ ມີການເກີດຂຶ້ນດ້ວຍອາການແນວນີ້

## ປະຕິດຈະສະມຸບບາດໂດຍປະຕິໂລມ

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ

| | |
|---|---|
| ຍ້ອນສັງຂານດັບ | ວິນຍານຈຶ່ງດັບ |
| ຍ້ອນວິນຍານດັບ | ນາມຮູບຈຶ່ງດັບ |
| ຍ້ອນນາມຮູບດັບ | ສະລາຍະຕະນະຈຶ່ງດັບ |
| ຍ້ອນສະລາຍະຕະນະດັບ | ຜັດສະຈຶ່ງດັບ |
| ຍ້ອນຜັດສະດັບ | ເວທະນາຈຶ່ງດັບ |
| ຍ້ອນເວທະນາດັບ | ຕັນຫາຈຶ່ງດັບ |
| ຍ້ອນຕັນຫາດັບ | ອຸປາທານຈຶ່ງດັບ |
| ຍ້ອນອຸປາທານດັບ | ພົບຈຶ່ງດັບ |
| ຍ້ອນພົບດັບ | ຊາດຈຶ່ງດັບ |
| ຍ້ອນຊາດດັບ | ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດ ຈຶ່ງດັບ |

ກອງທຸກທັງມວນນີ້ ມີການດັບດ້ວຍອາການແນວນີ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ[๑]

ເມື່ອໃດແລ ທຳທັງຫຼາຍຜາກົດແກ່ພາມ
ຜູ້ມີຄວາມພຽນ ເພ່ງຢູ່
ເມື່ອນັ້ນ ພາມນັ້ນຍ່ອມກຳຈັດມານແລະເສນາໄດ້
ຄືດວງອາທິດອຸໄທຂຶ້ນສາດສ່ອງທ້ອງຟ້າໃຫ້ສະຫວ່າງສະໄຫວ ສັນນັ້ນ

**ຕະຕິຍະໂພທິສູດທີ ๓ ຈົບ**

## ๔. ນິຫຸຫຸງກະສູດ
## ວ່າດ້ວຍຜູ້ບໍ່ຮ້ອງໃສ່ວ່າ ຫຶ ຫຶ

[๔] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ເມື່ອທຳອິດຕັດສະຣູ້ ປະທັບຢູ່ຄ່ວງຕົ້ນອະຊະປາລະນິໂຄດ[๒]ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງໂດຍບັນລັງດຽວ ສະເຫວີຍວິມຸດຕິສຸກຢູ່ເປັນເວລາ ๗ ມື້ ເມື່ອລ່ວງໄປ ๗ ມື້ ພຣະຜູ້ມີພຣະພາກເຈົ້າ ກໍຊົງອອກຈາກສະມາທິນັ້ນ

ຄັ້ງນັ້ນ ພາມຫຸຫຸກະຊາດ[๓]ຜູ້ໜຶ່ງ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຢືນຢູ່ບ່ອນທີ່ສົມຄວນ ພາມນັ້ນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ພຣະໂຄດົມຜູ້ຈະເລີນ ບຸກຄົນຊື່ວ່າເປັນພາມ ດ້ວຍເຫດພຽງໃດນໍ ແລະທຳເຫຼົ່າໃດທີ່ເຮັດບຸກຄົນໃຫ້ເປັນພາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນ ວ່າ

### ພຸດທະອຸທານ

ພາມໃດລອຍບາບທຳໄດ້ແລ້ວ ບໍ່ຮ້ອງໃສ່ຜູ້ອື່ນວ່າ ຫຶ ຫຶ
ບໍ່ມີກິເລດຄືນ້ຳຝາດ ສັງລວມຕົນ
ຮຽນຈົບເວດ[๑] ຢູ່ຈົບພົມມະຈັນ
ພາມນັ້ນບໍ່ມີກິເລດເຄື່ອງຟູ[๒]ຂຶ້ນໃນອາລົມໃດ ໆ ໃນໂລກ
ຄວນກ່າວພົມວາທະ[๓] ໄດ້ໂດຍທຳ[๔]

**ນິຫຸຫຸງກະສູດທີ ๔ ຈົບ**

# ໕. ພາມມະນະສູດ

## ວ່າດ້ວຍຄວາມເປັນພາມ

[໕] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະສາຣີບຸດ ທ່ານພຣະມະຫາໂມກຄັນລານະ ທ່ານພຣະມະຫາກັດສະປະ ທ່ານພຣະມະຫາກັດຈານະ ທ່ານພຣະມະຫາໂກດຖິຕະ ທ່ານພຣະມະຫາກັບປິນະ ທ່ານພຣະມະຫາຈຸນທະ ທ່ານພຣະອະນຸຣຸດທະ ທ່ານພຣະເຣວະຕະ ແລະທ່ານພຣະນັນທະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານເຫຼົ່ານັ້ນກຳລັງຍ່າງມາແຕ່ໄກເມື່ອທອດພຣະເນດ ເຫັນແລ້ວຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພາມເຫຼົ່ານັ້ນກຳລັງມາ ພິກຂຸທັງຫຼາຍ ພາມເຫຼົ່ານັ້ນກຳລັງມາ ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບວນີ້ ພິກຂຸເປັນພາມໂດຍກຳເນີດອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນຊື່ວ່າເປັນພາມ ດ້ວຍເຫດພຽງໃດນໍ ແລະທຳເຫຼົ່າໃດທີ່ເຮັດບຸກຄົນໃຫ້ເປັນພາມຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

### ພຸດທະອຸທານ[១]

ບຸກຄົນເຫຼົ່າໃດລອຍບາບທຳໄດ້ແລ້ວ
ເປັນຜູ້ມີສະຕິຢູ່ທຸກເມື່ອ ມີສັງໂຍດໝົດແລ້ວ ເປັນຜູ້ຕັດສະຮູ້
ບຸກຄົນເຫຼົ່ານັ້ນແລ ຊື່ວ່າ ພາມ ໃນໂລກ

**ພາມມະນະສູດທີ ໕ ຈົບ**

# ໖. ມະຫາກັດສະປະສູດ

## ວ່າດ້ວຍພຣະມະຫາກັດສະປະ

[໖] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ກະລັນທະກະນິວາປະສະຖານ[໒] ເຂດນະຄອນຣາດຊະຄຶ ສະໄໝນັ້ນ ທ່ານພຣະມະຫາກັດສະປະຢູ່ທີ່ຖ້ຳປິບຜະລິຄູຫາ ອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ຄັ້ງນັ້ນ ທ່ານພຣະມະຫາກັດສະປະຫາຍຈາກອາພາດນັ້ນແລ້ວມີຄວາມ ຄຶດດັ່ງນີ້ວ່າ ເອົາລະ ເຮົາຄວນເຂົ້າໄປບິນທະບາດໃນເມືອງຣາດຊະຄຶ

ສະໄໝນັ້ນແລ ເທວະດາປະມານ ໕໐໐ ອົງ ເຖິງຄວາມຂົນຂວາຍເພື່ອໃຫ້ທ່ານພຣະ ມະຫາກັດສະປະໄດ້ບິນທະບາດ ທ່ານພຣະມະຫາກັດສະປະຫ້າມເທວະດາປະມານ ໕໐໐ ອົງນັ້ນ ແລ້ວ ໃນເວລາເຊົ້າຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງຣາດ ຊະຄຶ ຕາມທາງບ່ອນຢູ່ຂອງຄົນຈົນ ບ່ອນຢູ່ຂອງຄົນກຳພ້າ ແລະບ່ອນຢູ່ຂອງຊ່າງຫູກ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະມະຫາກັດສະປະ ກຳລັງທ່ຽວບິນ ທະບາດ ຕາມທາງບ່ອນຢູ່ຂອງຄົນຈົນ ບ່ອນຢູ່ຂອງຄົນກຳພ້າ ແລະບ່ອນຢູ່ຂອງຊ່າງຫູກ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວຈຶ່ງຊົງເປ່ງອຸທານນີ້ໃນເວລາ ນັ້ນວ່າ

### ພຸດທະອຸທານ[໑]

ຜູ້ບໍ່ລ້ຽງຄົນອື່ນ ຜູ້ຮູ້ຈັກຕົນດີ
ຜູ້ເຝິກຝົນຕົນໄດ້ແລ້ວ ດຳລົງໝັ້ນຢູ່ໃນສາຣະທຳ[໒]
ຜູ້ສິ້ນອາສະວະແລ້ວ ຜູ້ຄາຍໂທດໄດ້ແລ້ວ[໓]
ເຮົາຮຽກວ່າ ພາມ

**ມະຫາກັດສະປະສູດທີ ໖ ຈົບ**

## ໗. ອະຊະກະລາປະກະສູດ

## ວ່າດ້ວຍອະຊະກະລາປະກະຍັກ

[໗] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ອະຊະກະລາປະກະເຈດີອັນເປັນບ່ອນຢູ່ ຂອງຍັກ ຊື່ວ່າ ອະຊະກະລາປະກະ ເຂດນະຄອນປາວາ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະ ທັບນັ່ງ ຢູ່ກາງແຈ້ງໃນຄວາມມືດມິດແຫ່ງຣາຕີ ແລະຝົນກຳໂຮຍລະອອງຢູ່ ຄັ້ງນັ້ນ ອະຊະກະລາ ປະກະຍັກປະສົງຈະໃຫ້ພຣະຜູ້ມີພຣະພາກເຈົ້າເກີດຄວາມຢ້ານ ຫວາດຫວັ່ນ ຂົນຫົວລຸກ ຈຶ່ງເຂົ້າ

ໄປຫາ ຮອດບ່ອນຢູ່ ແລ້ວໄດ້ສົ່ງສຽງຮ້ອງໄຫຍຫວນຂຶ້ນ ໓ ຄັ້ງ ຢູ່ໃກ້ພຣະຜູ້ມີພຣະພາກເຈົ້າວ່າ ອັກກຸໂລ ປັກກຸໂລ ແລ້ວເວົ້າວ່າ ສະມະນະນັ້ນຜີສາດ໌ຜາກົດແກ່ທ່ານ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ເນື້ອຄວາມນັ້ນແລ້ວຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ໌**

ເມື່ອໃດ ບຸກຄົນເຖິງຝັ່ງໃນທຳຂອງຕົນ ຊື່ວ່າເປັນພາມ
ເມື່ອນັ້ນ ບຸກຄົນນັ້ນ ຍ່ອມບໍ່ຢ້ານຜີສາດ ແລະສຽງຮ້ອງໄຫຍຫວນແນວນັ້ນ

**ອະຊະກະລາປະກະສູດທີ ໗ ຈົບ**

## ໘. ສັງຄາມະຊິສູດ

## ວ່າດ້ວຍພຣະສັງຄາມະຊິເຖຣະ

[໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະສັງຄາມະຊິເດີນທາງມາເຖິງນະຄອນສາວັດຖີໂດຍລຳດັບເພື່ອຈະເຝົ້າພຣະຜູ້ມີພຣະພາກເຈົ້າ ອະດີດພັນລະຍາຂອງທ່ານພຣະສັງຄາມະຊິໄດ້ຟັງຂ່າວວ່າ ໄດ້ຂ່າວວ່າພຣະຜູ້ເປັນເຈົ້າສັງຄາມະຊິເຖິງນະຄອນສາວັດຖີໂດຍລຳດັບແລ້ວນາງຈຶ່ງອຸ້ມລູກນ້ອຍໄປສູ່ພຣະເຊຕະວັນ

ສະໄໝນັ້ນ ທ່ານພຣະສັງຄາມະຊິນັ່ງພັກກາງເວັນຢູ່ໃຕ້ຕົ້ນໄມ້ແຫ່ງໜຶ່ງ ຄັ້ງນັ້ນ ອະດີດພັນລະຍາຂອງທ່ານພຣະສັງຄາມະຊິເຂົ້າໄປຫາເຖິງບ່ອນພັກ ໄດ້ກ່າວກັບທ່ານພຣະສັງຄາມະຊິດັ່ງນີ້ວ່າ ຂ້າແດ່ ສະມະນະ ຂໍທ່ານຈົ່ງລ້ຽງດູເຮົາຜູ້ມີລູກນ້ອຍເທີ້ນ ເມື່ອນາງກ່າວແນວນີ້ແລ້ວທ່ານພຣະສັງຄາມະຊິໄດ້ມິດຢູ່

ແມ່ນເທື່ອທີ ໒ ນາງກໍໄດ້ກ່າວກັບທ່ານພຣະສັງຄາມະຊິດັ່ງນີ້ວ່າ ຂ້າແດ່ ສະມະນະ ຂໍທ່ານຈົ່ງລ້ຽງດູເຮົາຜູ້ມີລູກນ້ອຍເທີ້ນ

ທ່ານພຣະສັງຄາມະຊິກໍໄດ້ມິດຢູ່

ແມ່ນເທື່ອທີ ໓ ນາງກໍໄດ້ກ່າວກັບທ່ານພຣະສັງຄາມະຊິດັ່ງນີ້ວ່າ ຂ້າແດ່ ສະມະນະ ຂໍທ່ານຈົ່ງລ້ຽງດູເຮົາຜູ້ມີລູກນ້ອຍເທີ້ນ

ທ່ານພຣະສັງຄາມະຊິກໍໄດ້ນິດຢູ່

ຄັ້ງນັ້ນ ອະດີດພັນລະຍາຂອງທ່ານພຣະສັງຄາມະຊິ ຈຶ່ງອຸ້ມລູກນ້ອຍນັ້ນ ໄປວາງໄວ້ທາງໜ້າທ່ານພຣະສັງຄາມະຊິແລ້ວຍ່າງໜີໄປໂດຍເວົ້າວ່າ ສະມະນະ ນັ້ນລູກຂອງທ່ານ ຈົ່ງລ້ຽງດູລູກຜູ້ນັ້ນດ້ວຍເທີ້ນ

ຄັ້ງນັ້ນ ທ່ານພຣະສັງຄາມະຊິທັງບໍ່ແລ ເບິ່ງແລະບໍ່ເວົ້າກັບເດັກນ້ອຍນັ້ນເລີຍ ຂະນະນັ້ນອະດີດພັນລະຍາຂອງທ່ານພຣະສັງຄາມະຊິໄປຈອບເບິ່ງຢູ່ໃນບ່ອນບໍ່ໄກເກີນໄປ ໄດ້ເຫັນທ່ານທັງບໍ່ແລເບິ່ງ ແລະບໍ່ເວົ້າກັບເດັກນ້ອຍນັ້ນ ຈຶ່ງຄິດວ່າ ສະມະນະນີ້ ຄົງບໍ່ຕ້ອງການລູກນ້ອຍ ຈຶ່ງກັບອອກຈາກບ່ອນນັ້ນແລ້ວອຸ້ມລູກນ້ອຍຍ່າງໄປ

ພຣະຜູ້ມີພຣະພາກເຈົ້າ ໄດ້ທອດພຣະເນດເຫັນອະດີດພັນລະຍາຂອງທ່ານພຣະສັງຄາມະຊິສະແດງອາການແປກແນວນັ້ນ ດ້ວຍທິບພະຈັກຂຸອັນບໍລິສຸດລ່ວງຈັກຂຸຂອງມະນຸດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ[១]

ຜູ້ບໍ່ເຍື່ອໃຍອະດີດພັນລະຍາຜູ້ມາຫາ
ບໍ່ເສົ້າໂສກເຖິງອະດີດພັນລະຍາຜູ້ຈາກໄປ
ເຮົາຮຽກຜູ້ຊະນະສົງຄາມ ຜູ້ພົ້ນຈາກກິເລດເຄື່ອງຂ້ອງແລ້ວ[໔] ວ່າ ພາມ

**ສັງຄາມະຊິສູດທີ ໘ ຈົບ**

## ໙. ຊະຕິລະສູດ

## ວ່າດ້ວຍພວກຊະດີນ

[໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຄະຍາສີສະບັນພົດໃກ້ໝູ່ບ້ານຄະຍາສະໄໝນັ້ນ ເປັນລະດູໜາວ ມີຫິມະຕົກ ໘ ມື້ ໃນເວລາກາງຄືນອາກາດໜາວເຢັນ ຊະດີນຈຳນວນຫຼາຍໂປ່ໂລ່ຂຶ້ນແດ່ ມຸດລົງແດ່ ທັງໂປ່ໂລ່ຂຶ້ນແລະມຸດລົງແດ່ ຫົດນ້ຳແດ່ ບູຊາໄຟແດ່ ທີ່ແມ່ນ້ຳຄະຍາດ້ວຍຄິດວ່າ ດ້ວຍວິທີນີ້ຈະບໍລິສຸດ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນຊະດິນຈຳນວນຫຼາຍໂປ່ໂລ່ຂຶ້ນແດ່ ມຸດລົງແດ່ ທັງໂປ່ໂລ່ຂຶ້ນແລະມຸດລົງແດ່ ທົດນ້ຳແດ່ ບູຊາໄຟບ້າງທີ່ແມ່ນ້ຳຄະຍາດ້ວຍຄິດວ່າ ດ້ວຍວິທີນີ້ຈະເຮັດໃຫ້ເປັນຜູ້ບໍລິສຸດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນ ວ່າ

## ພຸດທະອຸທານ[໑]

ບຸກຄົນຈະເປັນຜູ້ສະອາດຍ້ອນນ້ຳ
ທີ່ຄົນຈຳນວນຫຼາຍພາກັນໄປອາບກໍບໍ່ມີ
ຜູ້ໃດມີສັດຈະ[໒]ແລະທຳ[໓]
ຜູ້ນັ້ນຊື່ວ່າ ເປັນຜູ້ສະອາດ ແລະຜູ້ນັ້ນຊື່ວ່າ ເປັນພາມ

**ຊະຕິລະສູດທີ ໙ ຈົບ**

# ໑໐. ພາຫິຍະສູດ

## ວ່າດ້ວຍພຣະພາຫິຍະເຖຣະ

[໑໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ບຸຣຸດຊື່ພາຫິຍະ ທາຣຸຈີຣິຍະ[໔]ອາໄສຢູ່ທ່າສຸບປາຣະກະ ໃກ້ຝັ່ງທະເລ ມີຄົນຈຳນວນຫຼາຍພາກັນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ຈຶ່ງໄດ້ຈີວອນ ບິນທະ ບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຄັ້ງນັ້ນ ເມື່ອພາຫິຍະ ທາຣຸຈີຣິຍະຢູ່ໃນບ່ອນລັບຫຼີບຫຼີກຢູ່[໕] ເກີດຄວາມຄິດຄຳນຶງແນວນີ້ວ່າ ເຮົາເປັນຄົນໜຶ່ງໃນບັນດາຄົນໃນໂລກທີ່ເປັນພຣະອະຣະຫັນ ຫຼືວ່າເປັນຜູ້ບັນລຸອະຣະຫັດຕະມັກ

ເວລານັ້ນ ເທວະດາທີ່ເປັນຍາດສາໂລຫິດ[໑]ໃນປາງກ່ອນຂອງເຂົາ ມີປົກກະຕິອະນຸເຄາະປາຖະໜາຈະໃຫ້ເກີດປະໂຫຍດ ໄດ້ຮູ້ຄວາມຄິດຄຳນຶງຂອງເຂົາ ຈຶ່ງເຂົ້າໄປຫາເຂົາຮອດບ່ອນຢູ່ໄດ້ເວົ້າດັ່ງນີ້ວ່າ ພາຫິຍະ ທ່ານບໍ່ເປັນພຣະອະຣະຫັນ ບໍ່ເປັນຜູ້ບັນລຸອະຣະຫັດຕະມັກເລີຍ ແມ່ນປະຕິປະທາທີ່ຈະເປັນພຣະອະຣະຫັນ ຫຼື ເປັນຜູ້ບັນລຸອະຣະຫັດຕະມັກຂອງທ່ານກໍບໍ່ມີ

ພາຫິຍະ ທາຣຸຈີຣິຍະຈຶ່ງຖາມວ່າ ເມື່ອເປັນແນວນັ້ນ ບັດນີ້ ໃຜນໍເປັນພຣະອະຣະຫັນ ຫຼືເປັນຜູ້ບັນລຸອະຣະຫັດຕະມັກ ໃນໂລກພ້ອມທັງເທວະໂລກ

ເທວະດານັ້ນຕອບວ່າ ພາຫິຍະໃນຊົນນະບົດທາງເໜືອ ມີເມືອງຊື່ວ່າສາວັດຖີ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນປະທັບຢູ່ບ່ອນນັ້ນ ພາຫິຍະ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຊົງເປັນພຣະອະຣະຫັນ ທັງຊົງສະແດງທຳເພື່ອຄວາມເປັນພຣະອະຣະຫັນນຳ

ລຳດັບນັ້ນ ພາຫິຍະທາຣຸຈີຣິຍະ ຖືກເທວະດານັ້ນເຮັດໃຫ້ສັງເວດແລ້ວ ຈຶ່ງຫຼີກໄປຈາກທ່າສຸບປາຣະກະໃນທັນໃດນັ້ນເອງໄປສູ່ເມືອງສາວັດຖີທັນທີ ໂດຍພັກແຮມຄືນດຽວໃນທີ່ທັງປວງ ໄດ້ເຂົ້າໄປສູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ທີ່ພຣະຜູ້ມີພຣະ ພາກເຈົ້າປະທັບຢູ່

ສະໄໝນັ້ນພິກຂຸຈຳນວນຫຼາຍກຳລັງຈົງກົມຢູ່ກາງແຈ້ງ ພາຫິຍະທາຣຸຈີຣິຍະໄດ້ເຂົ້າໄປຫາພິກຂຸ ເຫຼົ່ານັ້ນເຖິງທີ່ຈົງກົມ ໄດ້ເວົ້າດັ່ງນີ້ວ່າ ທ່ານຂ້ານ້ອຍ ບັດນີ້ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າປະທັບຢູ່ໄສ ຂ້ານ້ອຍຕ້ອງການຈະເຝົ້າພຣະຜູ້ມີພຣະພາກອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ພິກຂຸເຫຼົ່ານັ້ນຕອບວ່າ ພາຫິຍະ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປບິນທະບາດໃນບ້ານ

ລຳດັບນັ້ນ ພາຫິຍະທາຣຸຈີຣິຍະ ຮີບຮ້ອນອອກຈາກພຣະເຊຕະວັນ ເຂົ້າໄປໃນເມືອງສາວັດຖີ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າຜູ້ກຳລັງສະເດັດທ່ຽວບິນທະບາດໃນນະຄອນສາວັດຖີ ຜູ້ໜ້າເຫຼື້ອມໃສ ຊົງເປັນ ທີ່ຕັ້ງແຫ່ງຄວາມເຫຼື້ອມໃສ ມີອິນຊີສະງົບ ມີພຣະຫະໄທສະງົບ ຊົງບັນລຸທະມະຖະແລະສະມະຖະທີ່ສູງສຸດ ຊົງເຝິກຝົນແລ້ວ ຊົງຄຸ້ມຄອງແລ້ວ ຊົງສັງລວມອິນຊີ ຊົງເປັນພຣະນາຄະ[១] ເມື່ອເຫັນແລ້ວຈຶ່ງເຂົ້າໄປເຝົ້າ ໝອບລົງແທບພຣະບາດທັງສອງພຣະຜູ້ມີພຣະພາກເຈົ້າໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງ ຂໍພຣະສຸດຄົດເຈົ້າໂຜດສະແດງທຳທີ່ຈະເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ຂ້າພຣະອົງຕະຫຼອດການລະນານເທີ້ນ ຂ້ານ້ອຍ

ເມື່ອພາຫິຍະທາຣຸຈີຣິຍະ ຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດກັບພາຫິຍະ ທາຣຸຈີຣິຍະ ດັ່ງນີ້ວ່າ ພາຫິຍະ ເວລານີ້ຍັງບໍ່ສົມຄວນ ຍ້ອນເຮົາກຳລັງທ່ຽວບິນທະບາດຕາມລະຫວ່າງເຮືອນຢູ່

ແມ່ນເທື່ອທີ ໔ ພາຫິຍະທາຣຸຈີຣິຍະ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຄວາມເປັນໄປແຫ່ງອັນຕະລາຍແກ່ຊີວິດຂອງພຣະຜູ້ມີພຣະພາກເຈົ້າກໍດີ ຄວາມເປັນໄປແຫ່ງອັນຕະລາຍແກ່ຊີວິດຂອງຂ້າພຣະອົງກໍດີຮູ້ໄດ້ຍາກ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະ ພາກເຈົ້າໂຜດສະແດງທຳ ແກ່ຂ້າພຣະອົງ ຂໍພຣະສຸດຄົດເຈົ້າໂຜດສະແດງທຳທີ່

ຈະເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ຂ້າພຣະອົງຕະຫຼອດການລະນານເທີ້ນຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດກັບພາຫິຍະທາຣຸຈີຣິຍະ ດັ່ງນີ້ວ່າ ພາຫິຍະ ເວລານີ້ຍັງບໍ່ສົມຄວນ ຍ້ອນເຮົາກຳລັງທ່ຽວບິນທະບາດຕາມລະຫວ່າງເຮືອນຢູ່

ແມ່ນເທື່ອທີ ໓ ພາຫິຍະທາຣຸຈີຣິຍະ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຄວາມເປັນໄປແຫ່ງອັນຕະລາຍແກ່ຊີວິດຂອງພຣະຜູ້ມີພຣະພາກເຈົ້າກໍດີ ຄວາມເປັນໄປແຫ່ງອັນຕະລາຍແກ່ຊີວິດຂອງຂ້າພຣະອົງກໍດີຮູ້ໄດ້ຍາກ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີ ພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງ ຂໍພຣະສຸດຄົດເຈົ້າໂຜດສະແດງທຳ ທີ່ຈະເປັນໄປ ເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ຂ້າພຣະອົງຕະຫຼອດການລະນານເທີ້ນຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ພາຫິຍະ ຍ້ອນເຫດນັ້ນ ທ່ານເພິ່ງສຶກສາແນວນີ້ວ່າ ເມື່ອເຫັນຮູບກໍພຽງແຕ່ວ່າເຫັນ ເມື່ອຟັງສຽງກໍພຽງແຕ່ວ່າຟັງ ເມື່ອຮັບຮູ້ອາລົມທີ່ໄດ້ຮັບຮູ້ໍກໍພຽງແຕ່ວ່າຮັບຮູ້ ເມື່ອຮູ້ແຈ້ງທຳມາຣົມທີ່ຮູ້ແຈ້ງກໍພຽງແຕ່ວ່າຮູ້ແຈ້ງ ພາຫິຍະ ທ່ານເພິ່ງຮັກສາແນວນີ້ແລ

ເມື່ອໃດ ທ່ານເມື່ອເຫັນຮູບກໍພຽງແຕ່ວ່າເຫັນ ເມື່ອຟັງສຽງກໍພຽງແຕ່ວ່າຟັງ ເມື່ອຮັບຮູ້ອາລົມ ທີ່ໄດ້ຮັບຮູ້ກໍພຽງແຕ່ວ່າຮັບຮູ້ ເມື່ອຮູ້ແຈ້ງທຳມາຣົມທີ່ຮູ້ແຈ້ງກໍພຽງແຕ່ວ່າຮູ້ແຈ້ງ ເມື່ອນັ້ນທ່ານ ກໍຈະບໍ່ມີ ເມື່ອໃດ ທ່ານບໍ່ມີ ເມື່ອນັ້ນ ທ່ານກໍຈະບໍ່ຢຶດຕິດໃນສິ່ງນັ້ນ໌ ເມື່ອໃດ ທ່ານບໍ່ຢຶດຕິດໃນສິ່ງນັ້ນ ເມື່ອນັ້ນ ທ່ານຈັກບໍ່ມີໃນໂລກນີ້ ບໍ່ມີໃນໂລກອື່ນ ບໍ່ມີໃນລະຫວ່າງໂລກທັງສອງ ນີ້ເປັນບ່ອນສຸດ ແຫ່ງທຸກ

ລຳດັບນັ້ນ ດ້ວຍພຣະທຳເທດສະໜາຫຍໍ້ນີ້ຂອງພຣະຜູ້ມີພຣະພາກເຈົ້າ ຈິດຂອງພາຫິຍະທາຣຸຈີຣິຍະຈຶ່ງລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດສອນພາຫິຍະ ທາຣຸຈີຣິຍະ ດ້ວຍພຣະໂອວາດໂດຍຫຍໍ້ນີ້ແລ້ວກໍສະເດັດຈາກໄປ

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ງົວແມ່ລູກອ່ອນໄດ້ຊົນພາຫິຍະ ທາຣຸຈີຣິຍະຈົນລົ້ມລົງເສຍຊີວິດ

ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດໄປບິນທະບາດໃນນະຄອນສາວັດຖີ ສະເດັດກັບຈາກບິນທະບາດຫຼັງຈາກສະເຫວີຍພຣະກະຍາຫານສຳເລັດແລ້ວ ສະເດັດອອກຈາກພຣະນະຄອນພ້ອມກັບພິກຂຸຈຳນວນຫຼາຍ ໄດ້ທອດພຣະເນດເຫັນພາຫິຍະ ທາຣຸຈີຣິຍະເສຍຊີວິດແລ້ວ

ຈຶ່ງຮັບສັ່ງ ຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຊ່ອຍກັນຍົກຮ່າງພາຫິຍະ ທາຣຸຈີຣິຍະຂຶ້ນວາງເທິງຕຽງແລ້ວນຳໄປເຜົາ ແລະຈົ່ງເຮັດສະຖູປໄວ້ ເພື່ອນພົມມະຈາຣີຂອງທ່ານທັງຫຼາຍເສຍຊີວິດແລ້ວ

ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ຊ່ອຍກັນຍົກຮ່າງພາຫິຍະ ທາຣຸຈີຣິຍະຂຶ້ນວາງເທິງຕຽງແລ້ວນຳໄປເຜົາ ເຮັດສະຖູປໄວ້ແລ້ວພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍເຜົາຮ່າງພາຫິຍະທາຣຸຈີຣິຍະ ແລະ ເຮັດສະຖູປໄວ້ແລ້ວ ຂ້ານ້ອຍ ເຂົາມີຄະຕິເປັນແນວໃດ? ມີພົບເບື້ອງໜ້າເປັນແນວໃດ? ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພາຫິຍະທາຣຸຈີຣິຍະ ເປັນຜູ້ດຳເນີນຊີວິດດ້ວຍປັນຍາ ດຳເນີນຕາມທຳທີ່ສົມຄວນແກ່ທຳ ທັງບໍ່ເຮັດໃຫ້ເຮົາລຳບາກ ຍ້ອນເຫດແຫ່ງການສະແດງທຳ ພິກຂຸທັງຫຼາຍ ພາຫິຍະທາຣຸຈີຣິຍະ ປະຣິນິບພານແລ້ວ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ[១]**

ໃນນິບພານ ບໍ່ມີດິນ ນ້ຳ ໄຟ ລົມ
ບໍ່ມີດວງດາວສ່ອງແສງ
ບໍ່ມີດວງອາທິດສ່ອງແສງ
ບໍ່ມີດວງຈັນສ່ອງແສງ ແລະບໍ່ມີຄວາມມືດ
ເມື່ອໃດ ພາມຊື່ວ່າເປັນມຸນີ
ຍ້ອນມີໂມໄນຍະທຳ[១]ຮູ້ແຈ້ງດ້ວຍຕົນເອງ
ເມື່ອນັ້ນ ເຂົາຍ່ອມລຸດພົ້ນຈາກຮູບພົບ[໔] ອະຮູບພົບ[໓] ແລະຈາກສຸກແລະທຸກ[໔]

**ພາຫິຍະສູດທີ ໑໐ ຈົບ**

(ພຣະຜູ້ມີພຣະພາກເຈົ້າໄດ້ຕັດອຸທານແມ່ນນີ້ ຕາມທີ່ຂ້າພະເຈົ້າໄດ້ຟັງມາແນວນີ້)

**ໂພທິວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໔. ມຸດຈະລິນທະວັກ

## ໝວດວ່າດ້ວຍພະຍານາກມຸດຈະລິນ

## ໑. ມຸດຈະລິນທສູດ

### ວ່າດ້ວຍພະຍານາກມຸດຈະລິນ

[໑໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ເມື່ອທຳອິດຕັດສະຣູ້ ປະທັບຢູ່ ຄ່ວງຕົ້ນມຸດຈະລິນ[1] ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງໂດຍບັນລັງດຽວ ສະເຫວີຍວິມຸດຕິສຸກຢູ່ເປັນເວລາ ໗ ມື້

ສະໄໝນັ້ນ ໄດ້ບັງເກີດກ້ອນເພື້ອໃຫຍ່ຂຶ້ນໃນສະໄໝບໍ່ແມ່ນລະດູ ເປັນຝົນມີລົມໜາວຕົກລິນ ຕະຫຼອດ ໗ ມື້ ລຳດັບນັ້ນ ພະຍານາກມຸດຈະລິນ ໄດ້ອອກຈາກບ່ອນຢູ່ຂອງຕົນ ໄປໂອບຮອບ ພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າດ້ວຍຄົດ ໗ ຮອບ ແຜ່ພັງພານໃຫຍ່ປົກຄຸມເໜືອພຣະສຽນ ດ້ວຍຫວັງວ່າ ຄວາມໜາວ ຢ່າໄດ້ບຽດບຽນພຣະຜູ້ມີພຣະພາກເຈົ້າ ຄວາມຮ້ອນ ຢ່າໄດ້ບຽດບຽນພຣະຜູ້ມີພຣະພາກເຈົ້າ ສຳຜັດຈາກເຮືອດ ຍຸງ ລົມ ແດດ ສັດເລືອຄານ ຢ່າໄດ້ບຽດບຽນພຣະຜູ້ມີພຣະພາກເຈົ້າ

ເມື່ອລ່ວງໄປ ໗ ມື້ ພຣະຜູ້ມີພຣະພາກເຈົ້າຊົງອອກຈາກສະມາທິນັ້ນ ພະຍານາກມຸດຈະລິນ ຮູ້ວ່າຝົນເອື້ອນ ປອດກ້ອນເພື້ອແລ້ວ ຈຶ່ງຄາຍຄົດອອກຈາກພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າ ແປງຮ່າງຂອງຕົນເປັນມານົບ ຢືນປະນົມມືຖວາຍອະພິວາດຢູ່ເບື້ອງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

### ພຸດທະອຸທານ[១]

ວິເວກ[២]ເປັນຄວາມສຸກຂອງຜູ້ສັນໂດດ[៣]
ຜູ້ມີທຳຜາກົດແລ້ວ ຜູ້ເຫັນຢູ່
ຄວາມບໍ່ບຽດບຽນຄືຄວາມສັງລວມໃນສັດທັງຫຼາຍ ເປັນສຸກໃນໂລກ
ຄວາມເປັນຜູ້ປາສະຈາກຣາຄະຄືຄວາມລ່ວງກາມທັງຫຼາຍໄດ້[៤] ເປັນສຸກໃນໂລກ
ຄວາມກຳຈັດອັດສະມິມານະໄດ້[៥] ເປັນສຸກຢ່າງຍິ່ງ[៦]

**ມຸດຈະລິນທະສູດທີ ໑ ຈົບ**

## ๘. ຣາຊະສູດ

### ວ່າດ້ວຍອານຸພາບຂອງພຣະຣາຊາ

[๑๘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພິກຂຸຈຳນວນຫຼາຍກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ມານັ່ງປະຊຸມພ້ອມກັນໃນອຸປັດຖານະສາລາ[៧]ໄດ້ສົນທະນາອັນຕະຣາກະຖາ[៨] ຂຶ້ນວ່າ ທ່ານທັງຫຼາຍ ບັນດາພຣະຣາຊາ ๒ ພຣະອົງນີ້ ຄື ພຣະເຈົ້າພິມພິສານຈອມທັບມະຄົດຣັດ ກັບພຣະເຈົ້າປະເສນທິໂກສົນ ພຣະອົງໃດ ມີຣາດຊະຊັບຫຼາຍກວ່າ ໂພຄະສົມບັດຫຼາຍກວ່າ ທ້ອງພຣະຄັງຫຼາຍກວ່າ ແວ່ນແຄວ້ນຫຼາຍກວ່າ ຣາດຊະພາຫະນະຫຼາຍກວ່າ ພຣະກຳລັງຫຼາຍກວ່າ ພຣະລິດຫຼາຍກວ່າ ຫຼື ຊົງອານຸພາບຫຼາຍກວ່າ ອັນຕະຣາກະຖາຂອງພິກຂຸເຫຼົ່ານັ້ນໄດ້ຄ້າງໄວ້ພຽງທໍ່ນີ້

ຄັ້ງນັ້ນ ໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ ສະເດັດເຂົ້າໄປສູ່ອຸປັດຖານະສາລາ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເວລານີ້ ທ່ານທັງຫຼາຍນັ່ງສົນທະນາກັນດ້ວຍເລື້ອງອັນໃດ ແລະເວົ້າເລື້ອງອັນໃດຄ້າງໄວ້

ພິກຂຸເຫຼົ່ານັ້ນຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ເມື່ອຂ້າພຣະອົງ ທັງຫຼາຍກັບຈາກບິນທະບາດ ຫຼັງຈາກສັນອາຫານສຳເລັດແລ້ວມານັ່ງປະຊຸມພ້ອມກັນໃນອຸປັ

ດຖານະສາລາ ໄດ້ສົນທະນາອັນຕະຣາກະຖາຂຶ້ນມາດັ່ງນີ້ວ່າ ທ່ານທັງຫຼາຍ ບັນດາພຣະຣາຊາ ໘ ພຣະອົງນີ້ ຄື ພຣະເຈົ້າພິມພິສານຈອມທັບມະຄົດຣັດ ກັບພຣະເຈົ້າປະເສນທິໂກສົນ ພຣະອົງໃດມີຣາດຊະຊັບຫຼາຍກວ່າ ໂພຄະສົມບັດຫຼາຍກວ່າ ທ້ອງພຣະຄັງຫຼາຍກວ່າ ແວ່ນແຄວ້ນຫຼາຍກວ່າ ຣາດຊະພາຫະນະຫຼາຍກວ່າ ພຣະກຳລັງຫຼາຍກວ່າ ພຣະລິດຫຼາຍກວ່າ ຫຼື ຊົງອານຸພາບຫຼາຍກວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນຕະຣາກະຖານີ້ແລທີ່ຂ້າພຣະອົງທັງຫຼາຍເວົ້າຄ້າງໄວ້ ກໍພໍດີພຣະຜູ້ມີພຣະພາກເຈົ້າສະເດັດມາເຖິງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ການທີ່ທ່ານທັງຫຼາຍຜູ້ເປັນກຸນລະບຸດມີສັດທາ ອອກຈາກເຮືອນບວດເປັນບັນພະຊິດ ແລ້ວມົວສົນທະນາເລື້ອງແນວນີ້ນັ້ນ ບໍ່ສົມຄວນເລີຍ ພິກຂຸທັງຫຼາຍ ທ່ານທັງຫຼາຍ ນັ່ງປະຊຸມກັນແລ້ວຄວນເຮັດກິດພຽງ ໘ ຢ່າງ ຄື ການກ່າວທຳ ຫຼື ຄວາມເປັນຜູ້ມິດຢ່າງພຣະອະຣິຍະ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ[໑]**

ກາມສຸກ[໒]ໃນໂລກ[໓]ແລະທິບພະສຸກ[໔] ຍັງບໍ່ເຖິງສ່ວນທີ ໑໖
ແຫ່ງຄວາມສຸກຄືຄວາມສິ້ນຕັນຫາ[໕]

**ຣາຊະສູດທີ ໘ ຈົບ**

## ໓. ທັນທະສູດ

## ວ່າດ້ວຍການທຳຮ້າຍສັດດ້ວຍໄມ້ຄ້ອນ

[໑໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ເດັກຊາຍຈຳນວນຫຼາຍໃຊ້ໄມ້ຄ້ອນຕີງູໃນລະຫວ່າງນະຄອນສາວັດຖີກັບພຣະເຊຕະວັນ ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນເມືອງສາວັດຖີ ໄດ້ທອດພຣະເນດເຫັນເດັກຊາຍ ເຫຼົ່ານັ້ນກຳລັງໃຊ້ໄມ້ຄ້ອນຕີງູໃນລະຫວ່າງນະຄອນສາວັດຖີກັບພຣະເຊຕະວັນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ**

ຜູ້ໃດໃຝ່ຫາຄວາມສຸກເພື່ອຕົນ
ແຕ່ກັບໃຊ້ໄມ້ຄ້ອນທຳຮ້າຍສັດທັງຫຼາຍຜູ້ຮັກສຸກ
ຜູ້ນັ້ນຕາຍໄປແລ້ວຍ່ອມບໍ່ໄດ້ຮັບຄວາມສຸກເລີຍ
ສ່ວນຜູ້ໃດໃຝ່ຫາຄວາມສຸກເພື່ອຕົນ
ບໍ່ໃຊ້ໄມ້ຄ້ອນທຳຮ້າຍສັດທັງຫຼາຍຜູ້ຮັກສຸກ
ຜູ້ນັ້ນຕາຍໄປແລ້ວ ຍ່ອມໄດ້ຮັບຄວາມສຸກ[໑]

**ທັນທະສູດທີ ໓ ຈົບ**

## ໔. ສັກກາຣະສູດ

## ວ່າດ້ວຍເຄື່ອງສັກກາຣະ

[໑໔] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ຊົງໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ແມ່ນພິກຂຸສົງກໍເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ສ່ວນພວກອັນຍະເດຍຣະຖີ[໒] ປະຣິພາຊົກ ເປັນຜູ້ທີ່ມະຫາຊົນບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ບໍ່ນອບນ້ອມ ບໍ່ໄດ້ ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຄັ້ງນັ້ນແລ ພວກອັນຍະເດຍຣະຖີ ປະຣິພາຊົກທົນເບິ່ງສັກກາຣະທີ່ເກີດຂຶ້ນແກ່ພຣະຜູ້ມີພຣະພາກເຈົ້າແລະພິກຂຸສົງບໍ່ໄດ້ ເຫັນພິກຂຸທັງຫຼາຍໃນບ້ານແລະ ໃນປ່າ ຍ່ອມດ່າ ກ່າວໂທດ ເວົ້າກະໂຊກໂຮກຮາກ ບຽດບຽນດ້ວຍວາຈາ ຫຍາບຄາຍທີ່ບໍ່ແມ່ນຂອງສັດຕະບຸຣຸດ

ຄັ້ງນັ້ນແລ ພິກຂຸຈຳນວນຫຼາຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ບັດນີ້ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ຊົງໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ແມ່ນພິກຂຸສົງກໍເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ສ່ວນພວກອັນຍະເດຍ

ຣະຖີປະຣິພາຊົກ ເປັນຜູ້ທີ່ມະຫາຊົນບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ບໍ່ນອບນ້ອມ ບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຄັ້ງນັ້ນແລ ພວກອັນຍະເດຍຣະຖີ ປະຣິພາຊົກ ທົນເບິ່ງສັກກາຣະທີ່ເກີດຂື້ນແກ່ພຣະຜູ້ມີພຣະພາກເຈົ້າແລະພິກຂຸສົງບໍ່ໄດ້ ເຫັນພິກຂຸທັງຫຼາຍໃນບ້ານແລະໃນປ່າ ຍ່ອມດ່າ ກ່າວໂທດ ເວົ້າກະໂຊກໂຮກຮາກ ບຽດບຽນດ້ວຍວາຈາ ຫຍາບຄາຍທີ່ບໍ່ແມ່ນຂອງສັດຕະບຸຣຸດ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ

ທ່ານທັງຫຼາຍໄດ້ຮັບສຸກແລະທຸກ ໃນບ້ານ (ຫຼື) ໃນປ່າ
ບໍ່ຄວນໃສ່ໃຈສຸກແລະທຸກນັ້ນວ່າມີສາເຫດມາຈາກຕົນ ຫຼື ຄົນອື່ນ
ຜັດສະທັງຫຼາຍ໑ ຈະສຳຜັດໄດ້ກໍຍ້ອນອາໄສອຸປະທິ
ເມື່ອບໍ່ມີອຸປະທິ ຜັດສະທັງຫຼາຍຈະສຳຜັດໄດ້ແນວໃດ

**ສັກກາຣະສູດທີ ໔ ຈົບ**

# ໕. ອຸປາສະກະສູດ

## ວ່າດ້ວຍອຸປາສົກ

[໑໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ອຸປາສົກຊາວບ້ານອິດສານັງຄະລະຄົນໜຶ່ງ ເຖິງນະຄອນສາວັດຖີໂດຍລຳດັບ ດ້ວຍກິດທີ່ຈະຕ້ອງເຮັດບາງຢ່າງ ຄັ້ງນັ້ນ ອຸປາສົກນັ້ນເມື່ອເຮັດກິດທີ່ຈະຕ້ອງເຮັດໃນນະຄອນສາວັດຖີສຳເລັດແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບອຸປາສົກນັ້ນດັ່ງນີ້ວ່າ ດົນເຫຼືອເກີນ ອຸປາສົກ ທ່ານຈຶ່ງມີເຫດມາ ບ່ອນນີ້ໄດ້

ອຸປາສົກນັ້ນຂາບທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງປະສົງຈະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າດົນແລ້ວ ຂ້ານ້ອຍ ແຕ່ວ່າຂ້າພຣະອົງມົວຂົນຂວາຍກັບກິດທີ່ຈະຕ້ອງເຮັດບາງຢ່າງ ຈຶ່ງບໍ່ສາມາດເຂົ້າມາເຝົ້າພຣະຜູ້ມີພຣະພາກເຈົ້າໄດ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ

ຄວາມສຸກຍ່ອມມີແກ່ບຸກຄົນຜູ້ບໍ່ມີອັນໃດ[๑]
ຜູ້ມີທຳອັນນັບໄດ້ແລ້ວ[๒]ເປັນພະຫູສູດ[๓]
ທ່ານຈົ່ງເບິ່ງຄົນທີ່ມີກິເລດເຄື່ອງກັງວົນກຳລັງເດືອດຮ້ອນຢູ່
ຍ້ອນຄົນທີ່ມີຄວາມຜູກພັນກັບຄົນອື່ນຍ່ອມເດືອດຮ້ອນ

**ອຸປາສະກະສູດທີ ໕ ຈົບ**

# ໖. ຄັບພິນີສູດ

## ວ່າດ້ວຍຍິງຖືພາ

[໑໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພັນລະຍາຂອງປະຣິພາຊົກຄົນໜຶ່ງ ເປັນມານະວິກາໄວສາວຖືພາແກ່ໃກ້ເກີດ ຄັ້ງນັ້ນ ນາງປະຣິພາຊິການັ້ນໄດ້ກ່າວກັບປະຣິພາຊົກນັ້ນ ດັ່ງນີ້ວ່າ ພາມ ທ່ານຈົ່ງໄປນຳນ້ຳມັນມາກຽມໄວ້ເພື່ອເຮົາໃນເວລາເກີດ

ເມື່ອນາງປະຣິພາຊິກາກ່າວແນວນີ້ ປະຣິພາຊົກນັ້ນຈຶ່ງກ່າວກັບນາງປະຣິພາຊິກາດັ່ງນີ້ວ່າ ແມ່ນາງ ເຮົາຈະນຳນ້ຳມັນມາຈາກບ່ອນໃດນໍ

ແມ່ນເທື່ອທີ ໒ ນາງປະຣິພາຊິກາກໍໄດ້ກ່າວກັບປະຣິພາຊົກດັ່ງນີ້ວ່າ ພາມ ທ່ານຈົ່ງໄປນຳນ້ຳມັນມາກຽມໄວ້ເພື່ອເຮົາໃນເວລາເກີດ

ປະຣິພາຊົກໄດ້ກ່າວກັບນາງປະຣິພາຊິກາດັ່ງນີ້ວ່າ ແມ່ນາງ ເຮົາຈະນຳນ້ຳມັນມາຈາກບ່ອນໃດນໍ

ແມ່ນເທື່ອທີ ໓ ນາງປະຣິພາຊິກາກໍໄດ້ກ່າວກັບປະຣິພາຊົກດັ່ງນີ້ວ່າ ພາມ ທ່ານຈົ່ງໄປນຳນ້ຳມັນມາກຽມໄວ້ເພື່ອເຮົາໃນເວລາເກີດ

ສະໄໝນັ້ນ ເຈົ້າໜ້າທີ່ພຣະຄັງໄດ້ຖວາຍເນີຍໃສແດ່ ນ້ຳມັນແດ່ ໃນຫ້ອງພຣະຄັງ ຂອງພຣະເຈົ້າປະເສນທິໂກສົນ ແກ່ສະມະນະແດ່ ແກ່ພາມແດ່ ໃຫ້ດື່ມຈົນພໍ ບໍ່ໃຫ້ເພື່ອນຳອອກໄປ

ຄັ້ງນັ້ນ ປະຣິພາຊິກາບັ້ນມີຄວາມຄິດດັ່ງນີ້ວ່າ ເຈົ້າໜ້າທີ່ພຣະຄັງໄດ້ຖວາຍເນີຍໃສແດ່ ນ້ຳມັນແດ່ ໃນຫ້ອງພຣະຄັງຂອງພຣະເຈົ້າປະເສນທິໂກສົນ ແກ່ສະມະນະແດ່ ແກ່ພາມແດ່ໃຫ້ດື່ມຈົນພໍ ບໍ່ໃຫ້ເພື່ອນຳອອກໄປ ທາງທີ່ດີ ເຮົາຄວນໄປຫ້ອງພຣະຄັງຂອງພຣະເຈົ້າປະເສນທິໂກສົນ ດື່ມນ້ຳມັນຈົນພໍແລ້ວກັບມາເຮືອນ ຄາຍນ້ຳມັນອອກມາກຽມໄວ້ເພື່ອ ນາງປະຣິພາຊິກາໃນເວລາເກີດ

ຄັ້ງນັ້ນ ປະຣິພາຊິກາບັ້ນໄດ້ໄປສູ່ຫ້ອງພຣະຄັງຂອງພຣະເຈົ້າປະເສນທິໂກສົນ ດື່ມນ້ຳມັນຈົນພໍແລ້ວກັບມາເຮືອນ ບໍ່ສາມາດນຳອອກຂ້າງເທິງ (ທາງປາກ) ໄດ້ ບໍ່ສາມາດນຳອອກຂ້າງລຸ່ມ (ຖ່າຍອອກ)ໄດ້ ເຂົາໄດ້ຮັບທຸກຂະເວທະນາກ້າແຂງ ເຈັບປວດ ເຜັດຮ້ອນ ຈຶ່ງກະສັບກະສ່າຍນອນກິ້ງໄປມາ

ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປເພື່ອບິນທະບາດໃນເມືອງສາວັດຖີ ໄດ້ທອດພຣະເນດເຫັນປະຣິພາຊິກາບັ້ນໄດ້ຮັບ ທຸກຂະເວທະນາກ້າແຂງ ເຈັບປວດ ເຜັດຮ້ອນ ກະສັບກະສ່າຍ ນອນກິ້ງໄປມາ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

**ພຸດທະອຸທານ**

ຄົນທັງຫຼາຍຜູ້ບໍ່ມີກິເລດເຄື່ອງກັງວົນ
ຍ່ອມເປັນຜູ້ມີຄວາມສຸກແທ້ຈິງ
ກໍຄົນທັງຫຼາຍ ທີ່ເປັນຜູ້ຈົບເວດ[๑]
ຊື່ວ່າຜູ້ບໍ່ມີກິເລດເຄື່ອງກັງວົນ
ທ່ານຈົ່ງເບິ່ງຄົນທີ່ມີກິເລດເຄື່ອງກັງວົນກຳລັງເດືອດຮ້ອນຢູ່
ຍ້ອນຄົນທີ່ມີຄວາມຜູກພັນກັບຄົນອື່ນຍ່ອມເດືອດຮ້ອນ

**ຄັບພິນີສູດທີ ໖ ຈົບ**

## ໗. ເອກະປຸດຕະກະສູດ

## ວ່າດ້ວຍອຸປາສົກມີບຸດນ້ອຍຄົນດຽວ

[໑໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີເຂດນະຄອນສາວັດຖີ ສະໄໝນັ້ນ ບຸດນ້ອຍຄົນດຽວຂອງອຸປາສິກາຄົນໜຶ່ງຜູ້ໜ້າຮັກ ໜ້າພໍໃຈ ໄດ້ຕາຍຈາກໄປ

ຄັ້ງນັ້ນ ອຸປາສົກຈຳນວນຫຼາຍມີຜ້າປຽກ ຜົມປຽກ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ໃນເວລາທ່ຽງວັນຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີ ພຣະພາກເຈົ້າຈຶ່ງຕັດກັບອຸປາສົກເຫຼົ່ານັ້ນດັ່ງນີ້ວ່າ ອຸປາສົກທັງຫຼາຍ ມີເລື້ອງອັນໃດນໍທ່ານທັງຫຼາຍມີຜ້າປຽກ ຜົມປຽກ ເຂົ້າມາບ່ອນນີ້ໃນເວລາທ່ຽງວັນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ອຸປາສົກນັ້ນຈຶ່ງຂາບທູນດັ່ງນີ້ວ່າ ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ບຸດນ້ອຍຄົນດຽວຂອງຂ້າພຣະອົງ ຜູ້ໜ້າຮັກ ໜ້າພໍໃຈ ໄດ້ຕາຍຈາກໄປຍ້ອນເຫດນັ້ນ ຂ້າພຣະອົງທັງຫຼາຍຈຶ່ງມີຜ້າປຽກ ຜົມປຽກ ເຂົ້າມາບ່ອນນີ້ໃນເວລາທ່ຽງວັນ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

## ພຸດທະອຸທານ

ເທວະດາແລະມະນຸດຈຳນວນຫຼາຍ
ພາກັນເພີດເພີນຍຶດຕິດໃນຮູບທີ່ໜ້າຮັກ
ຈຶ່ງຣະທົມທຸກ ເສື່ອມໝົດສິ້ນ[1]
ຕົກຢູ່ໃນອຳນາດຂອງມັດຈຸຣາດ
ແຕ່ຄົນເຫຼົ່າໃດ ບໍ່ຜະໝາດ
ທັງກາງເວັນແລະກາງຄືນ ລະຮູບທີ່ໜ້າຮັກໄດ້
ຄົນເຫຼົ່ານັ້ນຍ່ອມຂຸດຂຶ້ນໄດ້ເຊິ່ງມູນເຫດແຫ່ງທຸກ[2]
ທີ່ເປັນເຫຍື່ອຂອງມັດຈຸຣາດ ແລະທີ່ລ່ວງພົ້ນໄດ້ຍາກ

**ເອກະປຸດຕະກະສູດທີ ໗ ຈົບ**

# ໘. ສຸບປະວາສາສູດ

## ວ່າດ້ວຍພຣະນາງສຸບປະວາສາ

[໑໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ປ່າກຸນທິດຖານະວັນ ໃກ້ໝູ່ບ້ານ ກຸນທິຍາ ສະໄໝນັ້ນ ພຣະນາງສຸບປະວາສາ ໂກລິຍະທິດາ ຊົງຖືພາຢູ່ເຖິງ ໗ ປີ ມີພຣະອຸທອນ ຫຼົງ໌ ຢູ່ເຖິງ ໗ ມື້ ພຣະນາງໄດ້ຮັບທຸກຂະເວທະນາກ້າແຂງ ເຈັບປວດ ເຜັດຮ້ອນ ແຕ່ຊົງອົດກັ້ນໄວ້ດ້ວຍຄວາມນຶກ ໓ ປະການ ຄື (໑) ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຕັດສະຣູ້ ດ້ວຍພຣະອົງເອງໂດຍຖືກຕ້ອງ ຊົງສະແດງທຳເພື່ອລະທຸກປານນີ້ (໒) ພຣະສົງ ສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນຜູ້ປະຕິບັດດີ ປະຕິບັດເພື່ອລະທຸກປານນີ້ (໓) ພຣະນິບພານເຊິ່ງບໍ່ມີທຸກປານນີ້ ເປັນສຸກດີຢ່າງແທ້ຈິງ

ເມື່ອຕໍ່ມາ ພຣະນາງສຸບປະວາສາ ໂກລິຍະທິດາ ໄດ້ທູນເຊີນພຣະຣາດຊະສະວາມີມາຕັດວ່າ ຂ້າແດ່ພຣະລູກເຈົ້າ ຂໍພຣະອົງສະເດັດມານີ່ເທີ້ນ ພຣະອົງຈົ່ງສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແລ້ວຈົ່ງທູນຖາມເຖິງສຸກຂະພາບ ຄວາມມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍຕາມຄຳຂອງຂ້ານ້ອຍວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະນາງສຸບປະ- ວາສາ ໂກລິຍະທິດາ ຂໍຖວາຍອະພິວາດພຣະບາດທັງສອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ພ້ອມກັບທູນຖາມເຖິງສຸກຂະພາບ ຄວາມມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມ ສົມບູນ ຢູ່ສຸກສະບາຍ ອັນໜຶ່ງ ຂໍພຣະອົງຈົ່ງຂາບທູນແນວນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະນາງສຸບປະວາສາ ໂກລິຍະທິດາ ຊົງຖືພາຢູ່ເຖິງ ໗ ປີ ມີພຣະອຸທອນຫຼົງຢູ່ເຖິງ ໗ ມື້ ພຣະນາງໄດ້ຮັບທຸກຂະເວທະນາກ້າແຂງ ເຈັບປວດ ເຜັດຮ້ອນ ແຕ່ຊົງອົດກັ້ນໄວ້ໄດ້ດ້ວຍຄວາມນຶກ ໓ ປະການ ຄື (໑) ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ຊົງສະແດງທຳເພື່ອລະທຸກປານນີ້ (໒) ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນຜູ້ປະຕິບັດດີ ປະຕິບັດເພື່ອລະທຸກປານນີ້ (໓) ພຣະນິບພານເຊິ່ງບໍ່ມີທຸກປານນີ້ ເປັນສຸກດີຢ່າງແທ້ຈິງ

ພຣະຣາດຊະບຸດພຣະເຈົ້າໂກລິຍະນັ້ນຊົງຮັບຄຳຂອງພຣະນາງ ຈຶ່ງສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະນາງສຸບປະວາສາ ໂກລິຍະທິດາ ຂໍຖວາຍ ອະພິວາດພຣະບາດທັງສອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ພ້ອມກັບທູນ

ຖາມເຖິງສຸກຂະພາບ ຄວາມມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນຢູ່ສຸກສະບາຍ ອັນໜຶ່ງ ພຣະນາງຍັງຮັບສັ່ງແນວນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະນາງສຸບປະວາສາ ໂກລິຍະທິດາ ຊົງຖືພາຢູ່ເຖິງ ໗ ປີ ມີພຣະອຸທອນຫຼົງຢູ່ເຖິງ ໗ ມື້ ພຣະນາງໄດ້ຮັບທຸກຂະເວທະນາກ້າແຂງ ເຈັບປວດ ເຜັດຮ້ອນ ແຕ່ຊົງອົດກັ້ນໄວ້ໄດ້ດ້ວຍຄວາມນຶກ ໓ ປະການ ຄື (໑) ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຕັດສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ຊົງສະແດງທຳເພື່ອລະທຸກປານນີ້ (໒) ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນຜູ້ປະຕິບັດດີປະຕິບັດເພື່ອລະທຸກປານນີ້ (໓) ພຣະນິບພານເຊິ່ງບໍ່ມີທຸກປານນີ້ ເປັນສຸກດີຢ່າງແທ້ຈິງ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຂໍພຣະນາງສຸບປະວາສາ ໂກລິຍະທິດາ ຈົ່ງມີສຸກຢ່າມີພະຍາດເລີຍ ຂໍຈົງປະສູດໂອຣົດຜູ້ບໍ່ມີພະຍາດດ້ວຍເທີ້ນ ດ້ວຍພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າ ນັ້ນແລ ພຣະນາງສຸບປະວາສາ ໂກລິຍະທິດາກໍຊົງພຣະກະເສມສຳຣານ ຫາຍຈາກພະຍາດ ປະສູດພຣະໂອຣົດຜູ້ບໍ່ມີພະຍາດ

ພຣະຣາດຊະບຸດພຣະເຈົ້າໂກລິຍະນັ້ນທູນຮັບວ່າ ຂໍຈົ່ງເປັນແນວນັ້ນເທີ້ນ ຂ້ານ້ອຍ ແລ້ວຊົງຍິນດີຊື່ນຊົມພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ສະເດັດລຸກຂຶ້ນຈາກທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ຊົງທຳປະທັກຂິນແລ້ວສະເດັດກັບພຣະຣາດຊະນິເວດຂອງພຣະອົງ ໄດ້ຊົງເຫັນພຣະນາງສຸບປະວາສາ ໂກລິຍະທິດາຊົງພຣະກະເສມສຳຣານ ຫາຍຈາກພະຍາດ ປະສູດພຣະໂອຣົດຜູ້ບໍ່ມີພະຍາດ ເມື່ອຊົງເຫັນແລ້ວ ໄດ້ເກີດຄວາມອັດສະຈັນພຣະຫະໄທຂຶ້ນມາວ່າ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຕະຖາຄົດເຈົ້າຊົງມີລິດຫຼາຍ ມີອານຸພາບຫຼາຍແທ້ ພຣະນາງສຸບປະວາສາ ໂກລິຍະທິດານີ້ຄົງຈັກຊົງພຣະກະເສມສຳຣານ ຫາຍຈາກພະຍາດ ປະສູດພຣະໂອຣົດຜູ້ບໍ່ມີພະຍາດ ດ້ວຍພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້ານັ້ນແລຢ່າງແນ່ນອນ ຈຶ່ງຊົງດີພຣະຫະໄທ ເບີກບານ ຊົງເກີດປິຕິໂສມະນັດຢ່າງຍິ່ງ

ເມື່ອຕໍ່ມາ ພຣະນາງສຸບປະວາສາ ໂກລິຍະທິດາ ໄດ້ທູນເຊີນພຣະຣາດຊະສະວາມີມາຕັດວ່າ ຂ້າແດ່ພຣະລູກເຈົ້າ ຂໍພຣະອົງສະເດັດມາບ່ອນນີ້ເທີ້ນ ພຣະອົງຈົ່ງສະເດັດເຂົ້າໄປເຝົ້າພຣະຜູ້ມີ ພຣະພາກເຈົ້າຮອດບ່ອນຢູ່ ແລ້ວຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຂາບທູນຕາມຄຳຂອງຂ້ານ້ອຍວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະນາງສຸບປະວາສາ ໂກລິຍະທິດາຂໍຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ອັນໜຶ່ງ ຂໍພຣະອົງຈົ່ງຂາບທູນແນວນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະນາງສຸບປະວາສາ ໂກລິຍະທິດາ ຊົງຖືພາຢູ່ເຖິງ ໗ ປີ ມີພຣະອຸທອນຫຼົງຢູ່ເຖິງ ໗ ມື້ ບັດນີ້ ພຣະນາງຊົງພຣະກະເສມສຳຣານ ຫາຍຈາກພະຍາດ ປະສູດພຣະໂອຣົດຜູ້ບໍ່ມີພະຍາດ ພຣະນາງຈຶ່ງຂໍນິມົນ ພິກຂຸສົງມີພຣະພຸດທະເຈົ້າເປັນປະທານສັນພັດຕາຫານເປັນເວລາ ໗ ມື້ ຂ້າແດ່ພຣະອົງຜູ້ຈະເລີນ ຂໍ

ພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງພຣະນາງສຸບປະວາສາ ໂກລິຍະທິດາຕະຫຼອດ ໗ ມື້ເທີ້ນ

ພຣະຣາດຊະບຸດພຣະເຈົ້າໂກລິຍະນັ້ນຊົງຮັບຄຳຂອງພຣະນາງ ແລ້ວສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະນາງສຸບປະວາສາ ໂກລິຍະທິດາຂໍຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ອັນໜຶ່ງພຣະນາງຍັງຮັບສັ່ງແນວນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະນາງສຸບປະວາສາ ໂກລິຍະທິດາຊົງຖືພາຢູ່ເຖິງ ໗ ປີ ມີພຣະອຸທອນຫຼົງຢູ່ເຖິງ ໗ ມື້ ບັດນີ້ ພຣະນາງຊົງພຣະກະເສມສຳຣານຫາຍຈາກພຣະພະຍາດ ປະສູດພຣະໂອຣົດຜູ້ບໍ່ມີພະຍາດ ພຣະນາງຈຶ່ງຂໍນິມົນພິກຂຸສົງມີພຣະພຸດທະເຈົ້າເປັນປະທານສັນພັດຕາຫານເປັນເວລາ ໗ ມື້ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງພຣະນາງສຸບປະວາສາ ໂກລິຍະທິດາຕະຫຼອດ ໗ ມື້ເທີ້ນ

ອັນໜຶ່ງ ເວລານັ້ນ ອຸປາສົກຄົນໜຶ່ງໄດ້ນິມົນພິກຂຸສົງມີພຣະພຸດທະເຈົ້າເປັນປະທານ ສັນພັດຕາຫານໃນມື້ອື່ນເຊົ້າໄວ້ (ກ່ອນ)ແລ້ວ ແລະອຸປາສົກນັ້ນເປັນອຸປັດຖາກຂອງທ່ານພຣະມະຫາໂມກຄັນລານະ ບັດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຮັບສັ່ງຮຽກທ່ານພຣະມະຫາໂມກຄັນລານະມາຕັດວ່າ ມາເທີ້ນ ໂມກຄັນລານະ ທ່ານຈົ່ງເຂົ້າໄປຫາອຸປາສົກນັ້ນຮອດບ່ອນຢູ່ ແລ້ວຈົ່ງເວົ້າກັບເຂົາແນວນີ້ວ່າ ພຣະນາງສຸບປະວາສາ ໂກລິຍະທິດາ ຊົງຖືພາຢູ່ເຖິງ ໗ ປີ ມີພຣະອຸທອນຫຼົງຢູ່ເຖິງ ໗ ມື້ ບັດນີ້ ພຣະນາງຊົງພຣະກະເສມສຳຣານ ຫາຍຈາກພະຍາດ ປະສູດພຣະໂອຣົດຜູ້ບໍ່ມີພະຍາດ ພຣະນາງຈຶ່ງນິມົນພິກຂຸສົງມີພຣະພຸດທະເຈົ້າເປັນປະທານສັນພັດຕາຫານເປັນ ເວລາ ໗ ມື້ ຂໍໃຫ້ພຣະນາງສຸບປະວາສາ ໂກລິຍະທິດາ ຈັດອາຫານຖວາຍຕະຫຼອດ ໗ ມື້ເທີ້ນ ຫຼັງຈາກນັ້ນ ອຸປາສົກຜູ້ເປັນອຸປັດຖາກຂອງທ່ານ ຈຶ່ງຈັດອາຫານຖວາຍ

ທ່ານພຣະມະຫາໂມກຄັນລານະທູນຮັບສະໜອງພຣະດຳຣັດແລ້ວ ຈຶ່ງເຂົ້າໄປຫາອຸປາສົກນັ້ນ ຮອດບ່ອນຢູ່ ໄດ້ກ່າວດັ່ງນີ້ວ່າ ພຣະນາງສຸບປະວາສາ ໂກລິຍະທິດາ ຊົງຖືພາຢູ່ເຖິງ ໗ ປີ ມີພຣະອຸທອນຫຼົງຢູ່ເຖິງ ໗ ມື້ ບັດນີ້ ພຣະນາງຊົງພຣະກະເສມສຳຣານ ຫາຍຈາກພະຍາດ ປະສູດພຣະໂອຣົດຜູ້ບໍ່ມີພະຍາດ ພຣະນາງຈຶ່ງຊົງນິມົນພິກຂຸສົງມີພຣະພຸດທະເຈົ້າເປັນປະທານສັນພັດຕາຫານເປັນເວລາ ໗ ມື້ ຂໍໃຫ້ພຣະນາງສຸບປະວາສາ ໂກລິຍະທິດາຈັດອາຫານຖວາຍຕະຫຼອດ ໗ ມື້ເທີ້ນ ຫຼັງຈາກນັ້ນ ທ່ານຈຶ່ງຈັດອາຫານຖວາຍ

ອຸປາສົກນັ້ນຂາບຮຽນວ່າ ທ່ານຂ້ານ້ອຍ ຖ້າພຣະຜູ້ເປັນເຈົ້າມະຫາໂມກຄັນລານະຈະເປັນຜູ້ຄ້ຳປະກັນທຳ ໓ ປະການ ຄື ໂພຄະສົມບັດ ຊີວິດ ແລະສັດທາຂອງຂ້ານ້ອຍໄດ້ ກໍຂໍພຣະນາງ

ສຸບປະວາສາ ໂກລິຍະທິດາຊົງຈັດອາຫານຖວາຍຕະຫຼອດ ໆ ມື້ເທີ້ນ ຫຼັງຈາກນັ້ນ ຂ້ານ້ອຍຈຶ່ງຈັດອາຫານຖວາຍ ທ່ານພຣະມະຫາໂມກຄັນລານະຈຶ່ງເວົ້າວ່າ ອາຕະມາພາບ ຂໍຄໍ້າປະກັນທຳ ໘ ປະການ ຄື ໂພຄະສົມບັດແລະຊີວິດຂອງທ່ານ ສ່ວນສັດທາ ທ່ານຕ້ອງຄໍ້າປະກັນເອງ

ອຸປາສິການັ້ນຂາບຮຽນວ່າ ທ່ານຂ້ານ້ອຍ ຖ້າພຣະຜູ້ເປັນເຈົ້າມະຫາໂມກຄັນລານະຈະເປັນຜູ້ຄໍ້າປະກັນທຳ ໘ ປະການ ຄື ໂພຄະສົມບັດແລະຊີວິດຂອງຂ້ານ້ອຍໄດ້ ພຣະນາງສຸບປະວາສາ ໂກລິຍະທິດາຊົງຈັດອາຫານຖວາຍຕະຫຼອດ ໆ ມື້ເທີ້ນ ຫຼັງຈາກນັ້ນຂ້ານ້ອຍຈຶ່ງຈັດອາຫານຖວາຍ

ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະໃຫ້ອຸປາສິການັ້ນຍິນຍອມແລ້ວຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງໃຫ້ອຸປາສິການັ້ນຍິນຍອມແລ້ວ ຂໍພຣະນາງສຸບປະວາສາ ໂກລິຍະທິດາຈັດອາຫານຖວາຍຕະຫຼອດ ໆ ມື້ເທີ້ນ ຫຼັງຈາກນັ້ນ ອຸປາສິການັ້ນຈຶ່ງຈັດອາຫານຖວາຍ

ແລ້ວ ພຣະນາງສຸບປະວາສາ ໂກລິຍະທິດາ ຊົງນຳຂອງຂົບສັນອັນປະນີດ ປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານໃຫ້ອິ່ມໜຳດ້ວຍຕົນເອງຕະຫຼອດ ໆ ມື້ ແລະຊົງໃຫ້ພຣະໂອຣົດນ້ອຍນັ້ນຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລະໄຫວ້ພິກຂຸສົງທຸກອົງ

ຄັ້ງນັ້ນ ທ່ານພຣະສາຣີບຸດກ່າວກັບພຣະໂອຣົດນ້ອຍນັ້ນດັ່ງນີ້ວ່າ ພຣະໂອຣົດນ້ອຍ ພຣະອົງຊົງພຣະກະເສມສຳຣານດີບໍ ຊົງພໍດຳລົງຢູ່ໄດ້ບໍ ບໍ່ມີທຸກອັນໃດບໍ ພຣະໂອຣົດນ້ອຍນັ້ນຕັດຕອບວ່າ ທ່ານພຣະສາຣີບຸດຂ້ານ້ອຍ ຂ້ານ້ອຍຢູ່ໃນທ້ອງເປື້ອນໂລຫິດເຖິງ ໆ ປີ ຈະສະບາຍຢູ່ໄສ

ຕໍ່ຈາກນັ້ນ ພຣະນາງສຸບປະວາສາ ໂກລິຍະທິດາຊົງດີພຣະທະໄທຊື່ນຊົມ ເກີດປີຕິໂສມະນັດວ່າ ບຸດຂອງເຮົາຮູ້ຈັກສົນທະນາກັບທ່ານພຣະທຳເສນາບໍດີ ບັດນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ພຣະນາງສຸບປະວາສາ ໂກລິຍະທິດາຊົງດີພຣະທະໄທຊື່ນຊົມ ເກີດປີຕິໂສມະນັດ ຈຶ່ງໄດ້ຕັດກັບ ພຣະນາງດັ່ງນີ້ວ່າ ສຸບປະວາສາ ທ່ານຍັງປາຖະໜາຈະມີພຣະໂອຣົດແນວນີ້ອີກບໍພຣະນາງຂາບທູນວ່າ ຂ້າແດ່ພຣະຜູ້ມີພຣະພາກເຈົ້າຜູ້ຈະເລີນ ຂ້າພຣະອົງຍັງປາຖະໜາຈະມີພຣະໂອຣົດແນວນີ້ອີກ ໆ ພຣະອົງ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

## ພຸດທະອຸທານ[๑]

ສິ່ງທີ່ບໍ່ໜ້າຍິນດີ ຍ່ອມຄອບງຳຄົນຜູ້ຜະໝາດດ້ວຍອາການທີ່ໜ້າຍິນດີ
ສິ່ງທີ່ບໍ່ໜ້າຮັກ ຍ່ອມຄອບງຳຄົນຜູ້ຜະໝາດດ້ວຍອາການທີ່ໜ້າຮັກ
ສິ່ງທີ່ເປັນທຸກຍ່ອມຄອບງຳຄົນຜູ້ຜະໝາດດ້ວຍອາການທີ່ເປັນສຸກ[໔]

**ສຸບປະວາສາສູດທີ ໘ ຈົບ**

# ໙. ວິສາຂາສູດ

## ວ່າດ້ວຍນາງວິສາຂາ

[໑໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ບຸບພາຣາມ ຜາສາດຂອງນາງວິສາຂາ ມິຄາຣະມາຕາ ເຂດນະຄອນສາວັດຖີ ສະໄໝນັ້ນ ນາງວິສາຂາ ມິຄາຣະມາຕາມີປະໂຫຍດບາງຢ່າງກ່ຽວຂ້ອງໃນພຣະເຈົ້າປະເສນທິໂກສົນ ແຕ່ພຣະເຈົ້າປະເສນທິໂກສົນບໍ່ຊົງຍັງປະໂຫຍດນັ້ນໃຫ້ສຳເລັດຕາມຄວາມປະສົງ

ຄັ້ງນັ້ນ ໃນເວລາທ່ຽງວັນ ນາງວິສາຂາ ມິຄາຣະມາຕາຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ແລ້ວພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບນາງວິສາຂາດັ່ງນີ້ວ່າ ວິສາຂາ ທ່ານມາຈາກໃສ ແຕ່ທ່ຽງວັນ ນາງຂາບທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂ້າພຣະອົງມີປະໂຫຍດບາງຢ່າງທີ່ກ່ຽວຂ້ອງໃນພຣະເຈົ້າປະເສນທິໂກສົນ ແຕ່ພຣະເຈົ້າປະເສນທິໂກສົນບໍ່ຊົງຍັງປະໂຫຍດນັ້ນໃຫ້ສຳເລັດຕາມຄວາມປະສົງເລີຍ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປັ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ

ປະໂຫຍດທັງປວງຢູ່ໃນອຳນາດຜູ້ອື່ນ ກໍ່ໃຫ້ເກີດທຸກ
ຄວາມເປັນອິດສະຫຼະ[໑]ທັງປວງ ກໍ່ໃຫ້ເກີດສຸກ
ສັດທັງຫຼາຍເມື່ອຍັງມີປະໂຫຍດທົ່ວໄປຢູ່ ຍ່ອມເດືອດຮ້ອນ
ຍ້ອນໂຍຄະທັງຫຼາຍ[໒]ເປັນສິ່ງທີ່ກ້າວລ່ວງໄດ້ຍາກ

**ວິສາຂາສູດທີ ໙ ຈົບ**

# ໑໐. ພັດທິຍະສູດ

## ວ່າດ້ວຍພຣະພັດທິຍະເຖຣະ

[໒໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ອະນຸປິຍະອຳພະວັນ ສະໄໝນັ້ນ ທ່ານພຣະພັດທິຍະ ກາລິໂຄທາບຸດ[១]ເມື່ອຢູ່ໃນປ່າກໍດີ ຢູ່ທີ່ຄ່ອງໄມ້ກໍດີ ຫຼືຢູ່ໃນເຮືອນວ່າງກໍດີ ກໍເປ່ງອຸທານເນືອງ ໆ ວ່າ ສຸກັງ ສຸກັງ

ພິກຂຸຈຳນວນຫຼາຍໄດ້ຟັງທ່ານພຣະພັດທິຍະ ກາລິໂຄທາບຸດເມື່ອຢູ່ໃນປ່າກໍດີ ຢູ່ທີ່ຄ່ອງໄມ້ກໍດີ ຫຼືຢູ່ໃນເຮືອນວ່າງກໍດີ ກໍເປ່ງອຸທານເນືອງ ໆ ວ່າ ສຸກັງ ສຸກັງ ພິກຂຸເຫຼົ່ານັ້ນ ເມື່ອໄດ້ຟັງແລ້ວ ຈຶ່ງມີຄວາມຄິດແນວນີ້ວ່າ ທ່ານຜູ້ມີອາຍຸທັງຫຼາຍທ່ານພຣະພັດທິຍະ ກາລິໂຄທາບຸດ ບໍ່ຍິນດີປະພຶດພົມມະຈັນແນ່ ໆ ຍ້ອນເຄີຍໄດ້ຮັບຄວາມສຸກໃນຣາດຊະສົມບັດເມື່ອຄັ້ງເປັນຄະຣາວາດແລ້ວ ທ່ານຄົງຫວນຣະນຶກເຖິງຄວາມສຸກນັ້ນເມື່ອຢູ່ໃນປ່າກໍດີ ຢູ່ທີ່ຄ່ອງໄມ້ກໍດີ ຫຼືຢູ່ໃນເຮືອນວ່າງກໍດີ ກໍເປ່ງອຸທານເນືອງ ໆ ວ່າ ສຸກັງ ສຸກັງ

ຕໍ່ມາ ພິກຂຸເຫຼົ່ານັ້ນພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທ່ານພຣະພັດທິຍະ ກາລິໂຄທາບຸດເມື່ອຢູ່ໃນປ່າກໍດີ ຢູ່ທີ່ຄ່ອງໄມ້ກໍດີ ຫຼືຢູ່ໃນເຮືອນວ່າງກໍດີ ກໍເປ່ງອຸທານ ເນືອງ ໆ ວ່າ ສຸກັງ ສຸກັງ ຂ້າແດ່ພຣະອົງຜູ້ຈະເລີນ ທ່ານພຣະພັດທິຍະບໍ່ຍິນດີປະພຶດພົມມະຈັນແນ່ ໆ ຍ້ອນເຄີຍໄດ້ຮັບຄວາມສຸກໃນຣາດຊະສົມບັດ ເມື່ອຄັ້ງເປັນຄະຣາວາດແລ້ວ ທ່ານຄົງຫວນຣະນຶກເຖິງຄວາມສຸກນັ້ນ ເມື່ອຢູ່ໃນປ່າກໍດີ ຢູ່ທີ່ຄ່ອງໄມ້ກໍດີ ຫຼືຢູ່ໃນເຮືອນວ່າງກໍດີ ກໍເປ່ງອຸທານເນືອງ ໆ ວ່າ ສຸກັງ ສຸກັງ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸອົງໜຶ່ງມາຕັດວ່າ ພິກຂຸ ທ່ານຈົ່ງໄປຮຽກພິກຂຸຊື່ພັດທິຍະມາຫາເຮົາວ່າ ທ່ານພັດທິຍະ ພຣະສາດສະດາມີຮັບສັ່ງຫາທ່ານ ພິກຂຸນັ້ນທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປຫາທ່ານພຣະພັດທິຍະ ກາລິໂຄທາບຸດຮອດບ່ອນຢູ່ໄດ້ກ່າວກັບທ່ານພຣະພັດທິຍະດັ່ງນີ້ວ່າ ທ່ານພັດທິຍະ ພຣະສາດສະດາມີຮັບສັ່ງຫາທ່ານ ທ່ານພຣະພັດທິຍະ ກາລິໂຄທາບຸດຮັບຄຳຂອງພິກຂຸນັ້ນແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານດັ່ງນີ້ວ່າ ພັດທິຍະ ໄດ້ຂ່າວວ່າ ທ່ານເມື່ອຢູ່ໃນປ່າກໍດີ ຢູ່ທີ່ຄ່ອງໄມ້ກໍດີ ຫຼືຢູ່ໃນເຮືອນວ່າງກໍດີກໍເປ່ງອຸທານວ່າ ສຸກັງ ສຸກັງ ແມ່ນບໍ?

ທ່ານພຣະພັດທິຍະ ກາລິໂຄທາບຸດທູນຕອບວ່າ ຈິງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພັດທິຍະ ກໍທ່ານແນມເຫັນປະໂຫຍດອັນໃດ ເມື່ອຢູ່ໃນປ່າກໍດີ ຢູ່ທີ່ຄ່ອງໄມ້ກໍດີ ຫຼືຢູ່ໃນເຮືອນວ່າງກໍດີ ຈຶ່ງເປ່ງອຸທານເນືອງ ໆ ວ່າ ສຸກັງ ສຸກັງ

ທ່ານພຣະພັດທິຍະຂາບທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ສະໄໝເມື່ອຂ້າພຣະອົງເປັນຄະຣາວາດ ສະເຫວີຍຄວາມສຸກໃນຣາດຊະສົມບັດ ໄດ້ຮັບການອາຮັກຂາຄຸ້ມຄອງຢ່າງດີທັງພາຍໃນວັງ ໄດ້ຮັບການອາຮັກຂາຄຸ້ມຄອງຢ່າງດີທັງພາຍນອກວັງ ໄດ້ຮັບການອາຮັກຂາຄຸ້ມຄອງຢ່າງດີທັງພາຍໃນເມືອງ ໄດ້ຮັບການອາຮັກຂາຄຸ້ມຄອງຢ່າງດີທັງພາຍນອກເມືອງ ໄດ້ຮັບການອາຮັກຂາຄຸ້ມຄອງຢ່າງດີທັງໃນຊົນນະບົດ ໄດ້ຮັບການອາຮັກຂາຄຸ້ມຄອງຢ່າງດີທັງນອກຊົນນະບົດ ຂ້າພຣະອົງນັ້ນເຖິງຈະໄດ້ຮັບການອາຮັກຂາຄຸ້ມຄອງຢ່າງດີແນວນີ້ ກໍຍັງຢ້ານ ຍັງຫວາດຫວັ່ນ ຣະແວງ ສະດຸ້ງຢູ່ ແຕ່ເວລານີ້ ຂ້າພຣະອົງເມື່ອຢູ່ໃນປ່າກໍດີ ຢູ່ທີ່ຄ່ອງໄມ້ກໍດີ ຫຼືຢູ່ໃນເຮືອນວ່າງກໍດີ ພຽງຜູ້ດຽວກໍບໍ່ຢ້ານ ບໍ່ຫວາດຫວັ່ນ ບໍ່ຣະແວງ ບໍ່ສະດຸ້ງ ມີຄວາມປາຖະໜາໜ້ອຍ ບໍ່ຂົນລຸກຂົນພອງ ດຳລົງຊີວິດດ້ວຍປັດໄຈທີ່ຜູ້ອື່ນໃຫ້ ມີຈິດອິດສະຫຼະຄືກວາງ[໑] ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງເຫັນປະໂຫຍດແນວນີ້ ເມື່ອຢູ່ໃນປ່າກໍດີ ຢູ່ທີ່ຄ່ອງໄມ້ກໍດີ ຫຼືຢູ່ໃນເຮືອນວ່າງກໍດີ ຈຶ່ງເປ່ງອຸທານເນືອງ ໆ ວ່າ ສຸກນໍ ສຸກນໍ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ[໑]**

ຜູ້ໃດບໍ່ມີກິເລດເປັນເຫດໃຫ້ກຳເຣີບ[໒]ພາຍໃນຈິດ
ແລະລ່ວງພົ້ນຄວາມເປັນພົບ ແລະອະພົບ[໓]ຕ່າງ ໆ ໄດ້ແລ້ວ
ທວຍເທບບໍ່ສາມາດຈະແນມເຫັນຜູ້ນັ້ນ
ຜູ້ປາສະຈາກໄພ ມີຄວາມສຸກ ບໍ່ເສົ້າໂສກ[໔]

**ພັດທິຍະສູດທີ ໑໐ ຈົບ**

**ມຸດຈະລິນທະວັກທີ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໓. ນັນທະວັກ

## ໝວດວ່າດ້ວຍພຣະນັນທະເຖຣະ

## ໑. ກຳມະວິປາກະຊະສູດ

### ວ່າດ້ວຍການອົດກັ້ນທຸກຂະເວທະນາທີ່ເກີດຈາກຜົນກຳ

[໒໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພິກຂຸອົງໜຶ່ງນັ່ງຄູ້ບັນລັງ ຕັ້ງກາຍກົງ ອົດກັ້ນທຸກຂະເວທະນາທີ່ກ້າແຂງ ເຈັບປວດ ເຜັດຮ້ອນ ທີ່ເກີດຈາກຜົນແຫ່ງກຳເກົ່າ ມີສະຕິ ມີສຳປະຊັນຍະ ບໍ່ຮ້ອນຮົນໃຈ ຢູ່ໃນບ່ອນບໍ່ໄກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນພິກຂຸອົງນັ້ນຜູ້ກຳລັງນັ່ງຄູ້ບັນລັງ ຕັ້ງກາຍກົງ ອົດກັ້ນທຸກຂະເວທະນາທີ່ກ້າແຂງ ເຈັບປວດ ເຜັດຮ້ອນ ທີ່ເກີດຈາກຜົນກຳເກົ່າ ມີສະຕິ ມີສຳປະຊັນຍະ ບໍ່ຮ້ອນຮົນໃຈຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

### ພຸດທະອຸທານ

ພິກຂຸຜູ້ລະກຳທັງໝົດ[໑]ໄດ້
ກຳຈັດກຳທີ່ເປັນຄືທຸລີ[໒]ທີ່ຕົນເຄີຍເຮັດໄວ້ໄດ້
ບໍ່ມີຄວາມຍຶດຖືວ່າຂອງເຮົາ ດຳລົງໝັ້ນ[໓] ຕັ້ງທ່ຽງ
ກໍບໍ່ມີປະໂຫຍດອັນໃດທີ່ຈະບອກໃຫ້ຄົນຊ່ອຍປິ່ນປົວ

**ກຳມະວິປາກະຊະສູດທີ ໑ ຈົບ**

## ໒. ນັນທະສູດ

### ວ່າດ້ວຍພຣະນັນທະເຖຣະ

[໒໒] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະນັນທະພຣະພາດາຂອງພຣະຜູ້ມີພຣະພາກເຈົ້າ ພຣະໂອຣົດຂອງພຣະມາຕຸດສາ ໄດ້ບອກແກ່ພິກຂຸຫຼາຍອົງແນວນີ້ວ່າ ທ່ານຜູ້ມີອາຍຸທັງຫຼາຍ ຂ້ານ້ອຍບໍ່ຍິນດີຈະປະພຶດພົມມະຈັນ[9] ບໍ່ສາມາດຈະຊົງພົມມະຈັນໄວ້ໄດ້ ຂ້ານ້ອຍຈັກບອກຄືນສິກຂາກັບມາເປັນຄະລິຫັດ

ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທ່ານພຣະນັນທະພຣະພາດາຂອງພຣະຜູ້ມີພຣະພາກເຈົ້າ ພຣະໂອຣົດຂອງພຣະມາຕຸດສາໄດ້ບອກ ແກ່ພິກຂຸ ຫຼາຍອົງແນວນີ້ວ່າ ທ່ານຜູ້ມີອາຍຸທັງຫຼາຍ ຂ້ານ້ອຍບໍ່ຍິນດີປະພຶດ ພົມມະຈັນ ບໍ່ສາມາດຈະຊົງພົມມະຈັນໄວ້ໄດ້ ຂ້ານ້ອຍຈັກບອກຄືນສິກຂາກັບມາເປັນຄະລິຫັດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸອົງໜຶ່ງມາຕັດວ່າ ພິກຂຸ ທ່ານຈົ່ງໄປຮຽກນັນທະມາຫາເຮົາວ່າ ທ່ານນັນທະ ພຣະສາດສະດາຮັບສັ່ງຫາທ່ານ ພິກຂຸນັ້ນທູນຮັບສະໜອງ ພຣະດຳຣັດແລ້ວເຂົ້າໄປຫາທ່ານພຣະນັນທະຮອດບ່ອນຢູ່ ໄດ້ກ່າວກັບທ່ານພຣະນັນທະວ່າ ທ່ານນັນທະ ພຣະສາດສະດາຮັບສັ່ງຫາທ່ານ

ທ່ານພຣະນັນທະຮັບຄຳຂອງພິກຂຸອົງນັ້ນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຖາມທ່ານພຣະນັນທະດັ່ງນີ້ ວ່າ

ນັນທະ ໄດ້ຂ່າວວ່າ ທ່ານໄດ້ບອກແກ່ພິກຂຸຫຼາຍອົງແນວນີ້ວ່າ ທ່ານຜູ້ມີອາຍຸທັງຫຼາຍ ຂ້ານ້ອຍບໍ່ຍິນດີຈະປະພຶດພົມມະຈັນ ບໍ່ສາມາດຈະຊົງພົມມະຈັນໄວ້ໄດ້ ຂ້ານ້ອຍ ຈັກບອກຄືນສິກຂາກັບມາເປັນຄະລິຫັດແມ່ນບໍ?

ທ່ານພຣະນັນທະທູນຕອບວ່າ ເປັນເລື້ອງຈິງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປວ່າ ນັນທະ ກໍຍ້ອນເຫດອັນໃດ ທ່ານຈຶ່ງບໍ່ຍິນດີຈະປະພຶດ ພົມມະຈັນ ບໍ່ສາມາດຈະຊົງພົມມະຈັນໄວ້ໄດ້ ຈັກບອກຄືນສິກຂາກັບມາເປັນຄະລິຫັດ

ທ່ານພຣະນັນທະທູນຕອບວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂະນະທີ່ຂ້າພຣະອົງກຳລັງອອກຈາກພຣະຕຳໜັກ ນາງຊົນນະບົດກັນລະຍານີສາກິຍານີ ມີເກສາທີ່ເກົ້າໄວ້ພຽງເຄິ່ງດຽວ ຫຼຽວມາກ່າວກັບຂ້າພຣະອົງວ່າ ຂ້າແດ່ທູນຂະໜ່ອມ ຂໍພຣະອົງຟ້າວສະເດັດກັບມາ ຂ້າແດ່ພຣະອົງຜູ້

ຈະເລີນ ຂ້າພຣະອົງນັ້ນ ເມື່ອນຶກເຖິງຄໍາຂອງພຣະນາງເທື່ອໃດ ກໍບໍ່ຍິນດີຈະປະພຶດພົມມະຈັນ ບໍ່ສາມາດຈະຊົງພົມມະຈັນໄວ້ໄດ້ ຈຶ່ງຈັກບອກຄືນສິກຂາ ກັບມາເປັນຄະລຶຫັດ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຈັບແຂນທ່ານພຣະນັນທະ ສະເດັດຫາຍໄປຈາກພຣະເຊຕະວັນ ໄປຜາກົດໃນໝູ່ເທວະດາຊັ້ນຕາວະຕຶງສາ ຄື ຄົນມີກໍາລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າ ສັນນັ້ນ

ຂະນະນັ້ນ ນາງອັບປະສອນຜູ້ມີສີຕີນ ຄື ສີຕີນນົກກາງແກປະມານ ໕໐໐ ນາງ ກໍາລັງມາສູ່ທີ່ເຝົ້າຮັບໃຊ້ທ້າວສັກກະຈອມເທບ ທັນໃດນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮຽກທ່ານພຣະນັນທະ ມາຕັດຖາມວ່າ ນັນທະ ທ່ານເຫັນນາງອັບປະສອນຜູ້ມີສີຕີນຄືສີຕີນນົກກາງແກ ໕໐໐ ນາງ ເຫຼົ່ານີ້ບໍ?

ທ່ານພຣະນັນທະທູນຕອບວ່າ ເຫັນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປວ່າ ນັນທະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ (ຄື) ລະຫວ່າງນາງຊົນນະບົດກັນລະຍານີສາກິຍານີ ກັບນາງອັບປະສອນຜູ້ມີສີຕີນ ຄື ສີຕີນນົກກາງແກ ໕໐໐ ນາງເຫຼົ່ານີ້ ໃຜສວຍກວ່າກັນ ໜ້າເບິ່ງກວ່າກັນ ຫຼື ໜ້າຊົມກວ່າກັນ

ທ່ານພຣະນັນທະທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ນາງຊົນນະບົດກັນລະຍານີສາກິຍານີ ເມື່ອປຽບທຽບກັບນາງອັບປະສອນ ໕໐໐ ນາງເຫຼົ່ານີ້ ກໍຄືນາງລີງລຸ້ນຖືກໄຟໄໝ້ອະໄວຍະວະ ຫູວິ່ນດັງແຫວ່ງ ຄື ສວຍບໍ່ເຖິງໜຶ່ງສ້ຽວ ສວຍບໍ່ເຖິງສ່ວນໜຶ່ງຂອງສ້ຽວ ປຽບທຽບກັນບໍ່ໄດ້ເລີຍ ໂດຍແທ້ທີ່ຈິງ ນາງອັບປະສອນ ໕໐໐ ນາງເຫຼົ່ານີ້ແລສວຍກວ່າ ໜ້າເບິ່ງກວ່າ ແລະໜ້າຊົມກວ່າ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ທ່ານຈົ່ງຍິນດີ ທ່ານຈົ່ງຍິນດີເທີ້ນ ນັນທະ ເຮົາຂໍຮັບຮອງທ່ານເພື່ອໃຫ້ໄດ້ນາງອັບປະສອນຜູ້ມີສີຕີນ ຄື ສີຕີນນົກກາງແກ ໕໐໐ ນາງແນ່ ໆ

ທ່ານພຣະນັນທະຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພຣະຜູ້ມີພຣະພາກເຈົ້າຈະຊົງຮັບຮອງຂ້າພຣະອົງເພື່ອໃຫ້ໄດ້ນາງອັບປະສອນຜູ້ມີສີຕີນ ຄື ສີຕີນນົກກາງແກ ໕໐໐ ນາງແນ່ແທ້ ຂ້າພຣະອົງຈັກຍິນດີປະພຶດພົມມະຈັນ ຂ້ານ້ອຍ

ທັນໃດນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຈັບແຂນທ່ານພຣະນັນທະແລ້ວ ສະເດັດຫາຍໄປຈາກໝູ່ເທວະດາຊັ້ນຕາວະຕຶງສາ ໄປຜາກົດທີ່ພຣະເຊຕະວັນ ຄືຄົນມີກໍາລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ

ພິກຂຸທັງຫຼາຍຮູ້ຂ່າວວ່າ ໄດ້ຂ່າວມາວ່າ ທ່ານພຣະນັນທະພຣະພາດາຂອງພຣະຜູ້ມີພຣະພາກ ເຈົ້າ ພຣະໂອຣົດຂອງພຣະມາຕຸດສາ ປະພຶດພົມມະຈັນຍ້ອນນາງອັບປະສອນເປັນເຫດ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າກໍຊົງຮັບຮອງ ພຣະນັນທະເພື່ອໃຫ້ໄດ້ນາງອັບປະສອນຜູ້ມີສີຕີນຄື ສີຕີນນົກ ກາງແກ ໕໐໐ ນາງ

ຕັ້ງແຕ່ນັ້ນມາ ພິກຂຸທັງຫຼາຍທີ່ເປັນສະຫາຍຂອງທ່ານພຣະນັນທະ ກໍຮ້ອງຮຽກ ທ່ານພຣະນັນທະດ້ວຍວາທະວ່າລູກຈ້າງແດ່ ດ້ວຍວາທະວ່າຜູ້ຖືກໄຖ່ມາແດ່ວ່າ ໄດ້ຂ່າວວ່າ ທ່ານພຣະນັນທະເປັນລູກຈ້າງ ໄດ້ຂ່າວວ່າ ທ່ານພຣະນັນທະເປັນຜູ້ທີ່ພຣະຜູ້ມີພຣະພາກເຈົ້າຊົງໄຖ່ມາ ປະພຶດພົມມະຈັນຍ້ອນນາງອັບປະສອນເປັນເຫດ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າກໍຊົງຮັບຮອງ ພຣະນັນທະເພື່ອໃຫ້ໄດ້ນາງອັບປະສອນຜູ້ມີສີຕີນຄືສີຕີນນົກກາງແກ ໕໐໐ ນາງ

ທ່ານພຣະນັນທະອຶດອັດ ຣະອາ ລັງກຽດວາທະວ່າລູກຈ້າງ ແລະວາທະວ່າຜູ້ຖືກໄຖ່ມາຂອງພິກຂຸຜູ້ເປັນສະຫາຍເຫຼົ່ານັ້ນ ຈຶ່ງຈາກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ໌ ອັນເປັນບ່ອນສຸດແຫ່ງພົມມະຈັນທີ່ກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ໄດ້ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດ ທີ່ຄວນເຮັດ໌ສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຈຶ່ງເປັນອັນວ່າ ທ່ານພຣະນັນທະໄດ້ເປັນພຣະອະຣະຫັນອົງໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

ຄັ້ງນັ້ນ ເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງມີວັນນະງົດງາມຫຼາຍ ເປ່ງຣັດສະໝີ ໃຫ້ສະຫວ່າງໄປທົ່ວພຣະເຊຕະວັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວໄດ້ຢືນ ຢູ່ບ່ອນທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະນັນທະພຣະພາດາຂອງພຣະຜູ້ມີພຣະພາກເຈົ້າ ພຣະໂອຣົດຂອງພຣະມາຕຸດສາ ເຮັດໃຫ້ແຈ້ງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ແມ່ນພຣະຜູ້ມີພຣະພາກເຈົ້າກໍຊົງເກີດພຣະຍານຮູ້ວ່າ ນັນທະເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາ- ວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ເມື່ອຄືນນັ້ນຜ່ານໄປ ທ່ານພຣະນັນທະຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຊົງຮັບຮອງຂ້າພຣະອົງ ເພື່ອໃຫ້ໄດ້ນາງອັບປະສອນຜູ້

ມີສີຕິນຄືສີຕິນນົກກາງແກ ໕໐໐ ນາງ ຂ້າພຣະອົງຂໍປົດເປື້ອງພຣະຜູ້ມີພຣະພາກເຈົ້າຈາກການຮັບຮອງນັ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ນັນທະ ແມ່ນເຮົາເອງກໍກໍານົດຮູ້ໃຈທ່ານດ້ວຍໃຈວ່າ ນັນທະ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາ ອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ແມ່ນເທວະດາກໍໄດ້ບອກເນື້ອຄວາມນີ້ແກ່ເຮົາວ່າ ຂ້າແດ່ພຣະອົງ ຜູ້ຈະເລີນ ທ່ານພຣະນັນທະພຣະພາດາຂອງພຣະຜູ້ມີພຣະພາກເຈົ້າ ພຣະໂອຣົດຂອງພຣະມາຕຸດສາເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນັນທະ ເຮົາພົ້ນຈາກການຮັບຮອງນີ້ຕັ້ງແຕ່ຈິດຂອງທ່ານລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນນັ້ນແລ້ວ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

**ພຸດທະອຸທານ**

ພິກຂຸໃດ ຂ້າມເປືອກຕົມຄືກາມໄດ້[๑]
ຍໍ່າຍີໜາມຄືກາມໄດ້
ພິກຂຸນັ້ນ ບັນລຸຄວາມສິ້ນໂມຫະ[๔]
ຍ່ອມບໍ່ຫວັ່ນໄຫວຍ້ອນສຸກແລະທຸກ

**ນັນທະສູດທີ ໒ ຈົບ**

# ໓. ຍະໂສຊະສູດ

## ວ່າດ້ວຍພຣະຍະໂສຊະເຖຣະ

[໒໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພິກຂຸປະມານ ໕໐໐ ອົງມີພຣະຍະໂສຊະເປັນຫົວໜ້າເດີນທາງມາເຖິງນະຄອນສາວັດຖີໂດຍລໍາດັບເພື່ອຈະເຝົ້າພຣະຜູ້ມີພຣະພາກເຈົ້າ ພິກຂຸອາຄັນຕຸກະ ເຫຼົ່ານັ້ນແລກໍາລັງທັກທາຍກັບພິກຂຸເຈົ້າຖິ່ນ ປູລາດເສນາສະນະ ມ້ຽນບາດແລະຈີວອນຢູ່ ຈຶ່ງໄດ້ສົ່ງສຽງອື້ອຶງ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮຽກພຣະອານົນມາຕັດວ່າ ອານົນ ພິກຂຸພວກໃດສົ່ງສຽງອື້ອຶງຄືພວກຊາວປະມົງຍາດປາກັນ

ທ່ານພຣະອານົນທູນຕອບວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸປະມານ ໕໐໐ ອົງເຫຼົ່ານັ້ນມີພຣະຍະໂສຊະເປັນຫົວໜ້າເດີນທາງມາເຖິງນະຄອນສາວັດຖີໂດຍລຳດັບເພື່ອຈະເຝົ້າພຣະຜູ້ມີພຣະພາກເຈົ້າ ພິກຂຸອາຄັນຕຸກະເຫຼົ່ານັ້ນແລກຳລັງທັກທາຍກັບພິກຂຸເຈົ້າຖິ່ນ ປູລາດເສນາສະນະ ມ້ຽນບາດແລະຈີວອນຢູ່ ຈຶ່ງໄດ້ສົ່ງສຽງອື້ອຶງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ຖ້າເປັນແນວນັ້ນ ທ່ານຈົ່ງຮຽກພິກຂຸເຫຼົ່ານັ້ນມາຫາເຮົາວ່າ ພຣະສາດສະດາຮັບສັ່ງຫາທ່ານທັງຫຼາຍ

ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວເຂົ້າໄປຫາພິກຂຸເຫຼົ່ານັ້ນຮອດບ່ອນຢູ່ໄດ້ກ່າວ ກັບພິກຂຸເຫຼົ່ານັ້ນວ່າ ພຣະສາດສະດາຮັບສັ່ງຫາທ່ານທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳຂອງທ່ານພຣະອານົນແລ້ວພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຖາມພິກຂຸເຫຼົ່ານັ້ນດັ່ງນີ້ວ່າ

ພິກຂຸທັງຫຼາຍ ຍ້ອນເຫດອັນໃດ ທ່ານທັງຫຼາຍຈຶ່ງສົ່ງສຽງອື້ອຶງຄືພວກຊາວປະມົງຍາດປາກັນ ເມື່ອພຣະຜູ້ມີພຣະພາກເຈົ້າຕັດຖາມແນວນີ້ ທ່ານພຣະຍະໂສຊະຈຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸປະມານ ໕໐໐ ອົງເຫຼົ່ານີ້ເດີນທາງມາເຖິງນະຄອນສາວັດຖີໂດຍລຳດັບ ເພື່ອຈະເຝົ້າພຣະຜູ້ມີພຣະພາກເຈົ້າ ພິກຂຸອາຄັນຕຸກະ ເຫຼົ່ານັ້ນທັກທາຍກັບພິກຂຸເຈົ້າຖິ່ນ ປູລາດເສນາສະນະ ມ້ຽນບາດແລະຈີວອນຢູ່ ຈຶ່ງໄດ້ສົ່ງສຽງອື້ອຶງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງໄປສາເທີ້ນ ເຮົາຂັບໄລ່ທ່ານທັງຫຼາຍ ທ່ານທັງຫຼາຍບໍ່ຄວນຢູ່ໃນສຳນັກຂອງເຮົາ

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວພາກັນລຸກຈາກບ່ອນນັ່ງ ຖວາຍອະພິວາດ ແລ້ວທຳປະທັກຂິນ ມ້ຽນເສນາສະນະ ຖືບາດແລະຈີວອນທ່ຽວຈາຣິກໄປທາງແຄວ້ນວັດຊີທ່ຽວຈາຣິກໄປໂດຍລຳດັບຈົນເຖິງແຄວ້ນວັດຊີແລ້ວໄປທີ່ແມ່ນ້ຳວັກຄຸມຸທາ ສ້າງກຸດຕິມຸງດ້ວຍໃບໄມ້ ເຂົ້າຢູ່ຈຳພັນສາໃກ້ຝັ່ງແມ່ນ້ຳວັກຄຸມຸທາ

ຄັ້ງນັ້ນ ທ່ານພຣະຍະໂສຊະຜູ້ເຂົ້າຈຳພັນສາຢູ່ດ້ວຍ ໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ທ່ານຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງມຸ້ງຫວັງປະໂຫຍດ ສະແຫວງຫາປະໂຫຍດ ຊົງອະນຸເຄາະ ອາໄສຄວາມອະນຸເຄາະ ຈຶ່ງຊົງຂັບໄລ່ພວກເຮົາ ດັ່ງນັ້ນ ທ່ານຜູ້ມີອາຍຸທັງຫຼາຍ ຂໍພວກເຮົາຈົ່ງຢູ່ຄືທີ່ພຣະຜູ້ມີພຣະພາກເຈົ້າຊົງມຸ້ງຫວັງປະໂຫຍດ ແກ່ພວກເຮົາເທີ້ນ

ພິກຂຸເຫຼົ່ານັ້ນ ຮັບຄຳຂອງທ່ານພຣະຍະໂສຊະ ແລ້ວກໍຫຼີກໄປ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ພາຍໃນພັນສານັ້ນ ໆ ແລ ທຸກອົງກໍໄດ້ເຮັດໃຫ້ແຈ້ງວິດຊາ ໓ ປະການ໑

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າເມື່ອປະທັບຢູ່ໃນນະຄອນສາວັດຖີຕາມພຣະອັດທະຍາໄສ ແລ້ວ ຈຶ່ງສະເດັດຈາຣິກໄປທາງນະຄອນເວສາລີ ສະເດັດຈາຣິກໄປໂດຍລຳດັບຈົນເຖິງນະຄອນ ເວສາລີ ປະທັບຢູ່ ກູຕາຄານສາລາໃນປ່າມະຫາວັນ ເຂດນະຄອນເວສາລີນັ້ນ

ຂະນະປະທັບຢູ່ບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຊົງມະນະສິການກຳນົດຈິດຂອງພິກຂຸທີ່ ຢູ່ໃກ້ຝັ່ງແມ່ນ້ຳວັກຄຸມຸທາດ້ວຍພຣະຫະໄທແລ້ວຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ອານົນ ທິດທີ່ພິກຂຸຜູ້ຢູ່ໃກ້ຝັ່ງແມ່ນ້ຳວັກຄຸມຸທາຢູ່ຈຳພັນສານີ້ ເປັນຄືເກີດແສງສະຫວ່າງ ເປັນຄືເກີດຣັດສະ ໝີ ຜາກົດແກ່ເຮົາ ທ່ານຄົງບໍ່ລັງກຽດທີ່ຈະໄປເພື່ອຄວາມສົນໃຈຂອງເຮົາ ອານົນ ທ່ານເພິ່ງສົ່ງ ພິກຂຸຜູ້ເປັນທູດໄປສຳນັກພິກຂຸຜູ້ຢູ່ໃກ້ຝັ່ງແມ່ນ້ຳວັກຄຸມຸທາ ພ້ອມກັບສັ່ງວ່າ ພຣະສາດສະດາຮັບ ສັ່ງຫາທ່ານທັງຫຼາຍ ພຣະສາດສະດາມີພຣະປະສົງຈະພົບທ່ານທັງຫຼາຍ

ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປຫາພິກຂຸອົງໜຶ່ງຮອດບ່ອນຢູ່ ໄດ້ກ່າວກັບທ່ານວ່າ ຜູ້ມີອາຍຸ ທ່ານຈົ່ງເຂົ້າໄປຫາພິກຂຸທັງຫຼາຍຜູ້ຢູ່ໃກ້ຝັ່ງແມ່ນ້ຳວັກຄຸມຸທາຮອດ ບ່ອນຢູ່ ແລ້ວເວົ້າແນວນີ້ວ່າ ພຣະສາດສະດາຮັບສັ່ງຫາທ່ານທັງຫຼາຍ ພຣະສາດສະດາມີພຣະ ປະສົງຈະພົບ ທ່ານທັງຫຼາຍ

ພິກຂຸອົງນັ້ນ ຮັບຄຳທ່ານພຣະອານົນແລ້ວກໍຫາຍໄປຈາກກູຕາຄານສາລາໃນປ່າມະຫາ ວັນ ໄປຜາກົດເບື້ອງໜ້າພິກຂຸເຫຼົ່ານັ້ນທີ່ໃກ້ຝັ່ງແມ່ນ້ຳວັກຄຸມຸທາ ຄືຄົນມີກຳລັງຢຽດແຂນອອກຫຼືຄູ້ ແຂນເຂົ້າ ສັນນັ້ນ ແລ້ວໄດ້ກ່າວກັບພິກຂຸທັງຫຼາຍຜູ້ຢູ່ໃກ້ຝັ່ງແມ່ນ້ຳວັກຄຸມຸທາວ່າ ພຣະສາດສະ ດາຮັບສັ່ງຫາທ່ານທັງຫຼາຍ ພຣະສາດສະດາມີພຣະປະສົງຈະພົບ ທ່ານທັງຫຼາຍ

ພິກຂຸເຫຼົ່ານັ້ນ ຮັບຄຳຂອງພິກຂຸນັ້ນແລ້ວມ້ຽນເສນາສະນະ ຖືບາດແລະຈີວອນພ້ອມກັບ ຫາຍໄປຈາກຝັ່ງແມ່ນ້ຳວັກຄຸມຸທາໄປຜາກົດເບື້ອງພຣະພັກພຣະຜູ້ມີພຣະພາກເຈົ້າທີ່ກູຕາຄານສາ ລາໃນປ່າມະຫາວັນ ຄືຄົນມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ

ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເຂົ້າອາເນນຊະສະມາທິ[๒] ຄັ້ງນັ້ນ ພິກຂຸເຫຼົ່າ ນັ້ນໄດ້ມີຄວາມຄິດແນວນີ້ວ່າ ບັດນີ້ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ດ້ວຍວິຫານທຳໃດນໍ ແລ້ວ ພິກຂຸເຫຼົ່ານັ້ນກໍໄດ້ຮູ້ວ່າ ບັດນີ້ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ດ້ວຍອາເນນຊະວິຫານທຳ ທຸກອົງ ຈຶ່ງພາກັນນັ່ງເຂົ້າອາເນນຊະສະມາທິ

ຄັ້ງນັ້ນ ເມື່ອຣາຕີຜ່ານໄປແລ້ວ ປະຖົມມະຍາມຜ່ານໄປແລ້ວ ທ່ານພຣະອານົນກໍລຸກຈາກບ່ອນນັ່ງ ຫົ່ມຈີວອນບ່ຽງບ່າຂ້າງໜຶ່ງ ປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຣາຕີຜ່ານໄປແລ້ວ ປະຖົມມະຍາມຜ່ານໄປແລ້ວພິກຂຸອາຄັນຕຸກະນັ່ງຢູ່ດົນແລ້ວຂໍພຣະຜູ້ມີພຣະພາກເຈົ້າຊົງທັກທາຍກັບພິກຂຸອາຄັນຕຸກະດ້ວຍເທີ້ນ ຂ້ານ້ອຍ ເມື່ອທ່ານພຣະອານົນຂາບທູນແນວນີ້ ພຣະຜູ້ມີພຣະພາກເຈົ້າກໍຍັງປະທັບມິດຢູ່

ແມ່ນເທື່ອທີ ໒ ເມື່ອຣາຕີຜ່ານໄປແລ້ວ ມັດຊິມະຍາມຜ່ານໄປແລ້ວ ທ່ານພຣະອານົນກໍລຸກຈາກບ່ອນນັ່ງ ຫົ່ມຈີວອນບ່ຽງບ່າຂ້າງໜຶ່ງ ປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າປະທັບຢູ່ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຣາຕີຜ່ານໄປແລ້ວມັດຊິມະຍາມຜ່ານໄປແລ້ວ ພິກຂຸອາຄັນຕຸກະນັ່ງຢູ່ດົນແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງທັກທາຍກັບພິກຂຸອາຄັນຕຸກະດ້ວຍເທີ້ນ ຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າກໍຍັງປະທັບມິດຢູ່ຄືເກົ່າ

ແມ່ນເທື່ອທີ ໓ ເມື່ອຣາຕີຜ່ານໄປແລ້ວ ປັດສິມມະຍາມຜ່ານໄປແລ້ວ ເຂົ້າອາລຸນ ເລີ່ມສະຫວ່າງ ທ່ານພຣະອານົນກໍລຸກຈາກບ່ອນນັ່ງ ຫົ່ມຈີວອນບ່ຽງບ່າຂ້າງໜຶ່ງ ປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຣາຕີ ຜ່ານໄປແລ້ວ ປັດສິມມະຍາມຜ່ານໄປແລ້ວ ເຂົ້າອາລຸນ ເລີ່ມສະຫວ່າງ ພິກຂຸອາຄັນຕຸກະນັ່ງຢູ່ດົນແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງທັກທາຍກັບພິກຂຸອາຄັນຕຸກະດ້ວຍເທີ້ນ ຂ້ານ້ອຍ

ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າກໍສະເດັດອອກຈາກສະມາທິນັ້ນ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ອານົນ ຖ້າທ່ານເພິ່ງຮູ້ແລ້ວ ຄວາມແຈ່ມແຈ້ງແມ່ນນີ້ກໍຍັງບໍ່ຜາກົດແຈ້ງ ແກ່ທ່ານ ອານົນ ເຮົາກັບພິກຂຸ ໕໐໐ ອົງເຫຼົ່ານີ້ທັງໝົດໄດ້ນັ່ງເຂົ້າອາເນນຊະສະມາທິ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

## ພຸດທະອຸທານ[1]

ພິກຂຸໃດລະໜາມຄືກາມໄດ້[2]
ຊະນະການດ່າໄດ້[3] ຊະນະການທຳຮ້າຍໄດ້[4] ແລະຊະນະການຄຸມຂັງໄດ້
ພິກຂຸນັ້ນດຳລົງໝັ້ນ ບໍ່ຫວັ່ນໄຫວຄືພູ
ຍ່ອມບໍ່ຫວັ່ນໄຫວຍ້ອນສຸກແລະທຸກ

**ຍະໂສຊະສູດທີ ໓ ຈົບ**

# ໔. ສາຣີປຸດຕະສູດ

## ວ່າດ້ວຍພຣະສາຣີບຸດເຖຣະ

[໘໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະສາຣີບຸດນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າຢູ່ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະສາຣີບຸດຜູ້ກຳລັງນັ່ງຄູ້ບັນລັງ ຕັ້ງກາຍ ກົງ ດຳລົງສະຕິໄວ້ສະເພາະໜ້າຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ**

ພູສິລາລ້ວນຕັ້ງໝັ້ນບໍ່ຫວັ່ນໄຫວ ສັນໃດ
ພິກຂຸກໍສັນນັ້ນ ຍ້ອນສິ້ນໂມຫະ ຍ່ອມບໍ່ຫວັ່ນໄຫວຄືພູ[໑]

**ສາຣີປຸດຕະສູດທີ ໔ ຈົບ**

# ໕. ມະຫາໂມກຄັນລານະສູດ

## ວ່າດ້ວຍພຣະມະຫາໂມກຄັນລານະເຖຣະ

[໘໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະມະຫາໂມກຄັນລານະນັ່ງຄູ້ບັນລັງ ຕັ້ງກາຍກົງ ມີກາຍະຄະຕາສະຕິ[໒]ທີ່ຕັ້ງໝັ້ນພາຍໃນຕົນຢູ່ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະມະຫາໂມກຄັນລານະ ຜູ້ກຳລັງນັ່ງຄູ້ບັນລັງ ຕັ້ງກາຍກົງ ມີກາຍະຄະຕາສະຕິທີ່ຕັ້ງໝັ້ນພາຍໃນຕົນຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

**ພຸດທະອຸທານ**

ພິກຂຸ ທີ່ຈະເລີນກາຍະຄະຕາສະຕິແນ່ວແນ່
ສັງວອນໃນຜັດສາຍະຕະນະທັງ ໖ ມີຈິດຕັ້ງໝັ້ນສະເໝີ
ກໍຈະເພິ່ງຮູ້ການດັບກິເລດຂອງຕົນໄດ້

**ມະຫາໂມກຄັນລານະສູດທີ ໕ ຈົບ**

## ໖. ປິລິນທະວັດສະສູດ

### ວ່າດ້ວຍພຣະປິລິນທະວັດສະເຖຣະ

[໔໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເວລຸວັນ ກະລັນທະກະນິວາປະສະຖານ[໑] ເຂດນະຄອນຣາດຊະຄຶ ສະໄໝນັ້ນ ທ່ານພຣະປິລິນທະວັດສະຮ້ອງຮຽກພິກຂຸທັງຫຼາຍດ້ວຍວາທະວ່າຄົນຖ່ອຍ ຄັ້ງນັ້ນ ພິກຂຸຈຳນວນຫຼາຍພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທ່ານພຣະປິລິນທະວັດສະຮ້ອງຮຽກພິກຂຸທັງຫຼາຍດ້ວຍວາທະວ່າຄົນຖ່ອຍ ຂ້ານ້ອຍ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຮັບສັ່ງຮຽກພິກຂຸອົງໜຶ່ງມາຕັດວ່າ ພິກຂຸ ທ່ານຈົ່ງໄປຮຽກພຣະປິລິນທະວັດສະມາຫາເຮົາວ່າ ທ່ານປິລິນທະວັດສະ ພຣະສາດສະດາຮັບສັ່ງຫາທ່ານ ພິກຂຸອົງນັ້ນທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປຫາທ່ານພຣະປິລິນທະວັດສະຮອດບ່ອນຢູ່ ແລ້ວໄດ້ກ່າວກັບທ່ານພຣະປິລິນທະວັດສະວ່າ ທ່ານປິລິນທະວັດສະ ພຣະສາດສະດາຮັບສັ່ງຫາທ່ານ

ທ່ານພຣະປິລິນທະວັດສະຮັບຄຳຂອງພິກຂຸອົງນັ້ນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຖາມທ່ານ ດັ່ງນີ້ວ່າ ປິລິນທະວັດສະ ໄດ້ຂ່າວວ່າ ທ່ານຮ້ອງຮຽກພິກຂຸທັງຫຼາຍດ້ວຍວາທະວ່າຄົນຖ່ອຍ ແມ່ນບໍ?

ທ່ານພຣະປິລິນທະວັດສະທູນຕອບວ່າ ເປັນເລື້ອງຈິງ ຂ້ານ້ອຍ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຣະນຶກເຖິງອະດີດຊາດຂອງທ່ານພຣະປີລິນທະວັດສະແລ້ວ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຢ່າຖືໂທດວັດສະເລີຍ ວັດສະບໍ່ໄດ້ມຸ້ງຮ້າຍຮ້ອງຮຽກພິກຂຸທັງຫຼາຍດ້ວຍວາທະວ່າຄົນຖ່ອຍ ວັດສະເກີດໃນຕະກູນພາມຕິດຕໍ່ກັນບໍ່ມີເວລາຄັ່ນເຖິງ ໕໐໐ ຊາດ ການໃຊ້ວາທະວ່າຄົນຖ່ອຍນັ້ນ ທ່ານກໍ ປະພຶດມາດົນແລ້ວຍ້ອນແນວນັ້ນ ວັດສະ ຈຶ່ງຮ້ອງຮຽກພິກຂຸທັງຫຼາຍດ້ວຍວາທະວ່າຄົນຖ່ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

### ພຸດທະອຸທານ

ຜູ້ໃດ ບໍ່ມີມາຍາ ບໍ່ມີມານະ ສິ້ນໂລພະແລ້ວ
ບໍ່ມີການຍຶດຖືວ່າຂອງເຮົາ ບໍ່ມີຄວາມຫວັງ[๑]
ລະຄວາມໂກດໄດ້ ມີຈິດສະງົບເຢັນຍິ່ງ
ຜູ້ນັ້ນຊື່ວ່າ ພາມ ສະມະນະ ພິກຂຸ[๒]

**ປີລິນທະວັດສະສູດທີ ໖ ຈົບ**

## ໗. ສັກກຸທານະສູດ

## ວ່າດ້ວຍການເປ່ງອຸທານຂອງທ້າວສັກກະ

[໔໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເວລຸວັນ ກະລັນທະກະນິວາປະສະຖານ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ທ່ານພຣະມະຫາກັດສະປະນັ່ງເຂົ້າສະມາທິແນວໃດແນວໜຶ່ງໂດຍບັນລັງຄຸງວຢູ່ເປັນເວລາ ໗ ມື້ ໃນຖ້ຳປີບຜະລິຄູຫາ ເມື່ອລ່ວງໄປ ໗ ມື້ ທ່ານພຣະມະຫາກັດສະປະກໍອອກຈາກສະມາທິນັ້ນ ເມື່ອທ່ານພຣະມະຫາກັດສະປະອອກຈາກສະມາທິນັ້ນໄດ້ມີຄວາມຄຶດດັ່ງນີ້ວ່າ ທາງທີ່ດີ ເຮົາຄວນເຂົ້າໄປບິນທະບາດໃນເມືອງຣາດຊະຄຶ

ສະໄໝນັ້ນ ເທວະດາປະມານ ໕໐໐ ອົງຂວນຂວາຍເພື່ອໃຫ້ທ່ານພຣະມະຫາກັດສະປະ ໄດ້ຮັບບິນທະບາດ ຄັ້ງນັ້ນ ທ່ານພຣະມະຫາກັດສະປະຈຶ່ງຫ້າມເທວະດາປະມານ ໕໐໐ ອົງ ເຫຼົ່ານັ້ນໃນເວລາເຊົ້າ ຄອງອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງຣາດຊະຄຶ

ຂະນະນັ້ນ ທ້າວສັກກະຈອມເທບມີພຣະປະສົງຈະຖວາຍບິນທະບາດແກ່ທ່ານພຣະມະຫາກັດສະປະ ຈຶ່ງຊົງແປງພຣະວໍຣະກາຍເປັນນາຍຊ່າງຫູກທໍຜ້າຢູ່ ນາງສຸຊາດາອະສຸຣະກັນຍາ

ກຳລັງປັ່ນ ຫຼອດດ້າຍ ຝ່າຍທ່ານພຣະມະຫາກັດສະປະທ່ຽວບິນທະບາດຕາມລຳດັບຮ່ອມເຖິງນິເວດຂອງທ້າວສັກກະຈອມເທບ ພຣະອິງໄດ້ທອດພຣະເນດເຫັນທ່ານພຣະມະຫາກັດສະປະກຳລັງຍ່າງມາແຕ່ໄກ ຈຶ່ງສະເດັດອອກຈາກເຮືອນຊິງຕ້ອນຮັບ ຊິງຮັບບາດຈາກມືສະເດັດເຂົ້າເຮືອນ ຊົງຕັກເຂົ້າສຸກຈາກໝໍ້ໃສ່ເຕັມບາດຖວາຍທ່ານພຣະມະຫາກັດສະປະ ບິນທະບາດນັ້ນໄດ້ມີແກງແລະກັບເຂົ້າຫຼາຍແນວ ທ່ານພຣະມະຫາກັດສະປະໄດ້ມີຄວາມຄິດແນວນີ້ວ່າ ທ່ານຜູ້ນີ້ເປັນໃຜນໍ ຈຶ່ງມີລິດທານຸພາບປານນີ້ ລຳດັບນັ້ນ ທ່ານພຣະມະຫາກັດສະປະໄດ້ມີຄວາມຄິດແນວນີ້ວ່າ ຄົງເປັນທ້າວສັກກະຈອມເທບແນ່ນອນ ຈຶ່ງໄດ້ກ່າວກັບພຣະອິງດັ່ງນີ້ວ່າ ທ້າວໂກສີ ເປັນຫຍັງພຣະອົງຈຶ່ງຊົງເຮັດແນວນີ້ ຕໍ່ໄປຢ່າໄດ້ເຮັດແນວນີ້ອີກ ທ້າວສັກກະຈອມເທບຕັດຕອບວ່າ ໂດຍຂ້ານ້ອຍ ທ່ານກັດສະປະ ພວກຂ້ານ້ອຍທັງຫຼາຍກໍຕ້ອງການບຸນ ຈຶ່ງຄວນເຮັດບຸນຄືກັນ

ຕໍ່ຈາກນັ້ນ ທ້າວສັກກະຈອມເທບຊົງອະພິວາດທ່ານພຣະມະຫາກັດສະປະ ຊົງກະທຳປະທັກຂິນແລ້ວສະເດັດເຫາະຂຶ້ນໄປໃນອາກາດ ຊົງເປ່ງອຸທານກາງອາກາດ ໓ ຄັ້ງວ່າ

ໂອ ເຮົາໄດ້ຖວາຍທານອັນປະເສີດ ໃນທ່ານພຣະມະຫາກັດສະປະແລ້ວ
ໂອ ເຮົາໄດ້ຖວາຍທານອັນປະເສີດ ໃນທ່ານພຣະມະຫາກັດສະປະແລ້ວ
ໂອ ເຮົາໄດ້ຖວາຍທານອັນປະເສີດ ໃນທ່ານພຣະມະຫາກັດສະປະແລ້ວ

ພຣະຜູ້ມີພຣະພາກເຈົ້າໄດ້ຊົງສະດັບອຸທານທີ່ທ້າວສັກກະຈອມເທບສະເດັດເຫາະຂຶ້ນໄປໃນອາກາດ ຊົງເປ່ງກາງອາກາດ ໓ ຄັ້ງວ່າ ໂອ ເຮົາໄດ້ຖວາຍທານອັນປະເສີດໃນທ່ານພຣະມະຫາກັດສະປະແລ້ວ ໂອ ເຮົາໄດ້ຖວາຍທານອັນປະເສີດໃນທ່ານພຣະມະຫາກັດສະປະແລ້ວ ໂອ ເຮົາໄດ້ຖວາຍທານອັນປະເສີດໃນທ່ານພຣະມະຫາກັດສະປະແລ້ວ ດ້ວຍພຣະໂສຕາທິບອັນບໍລິສຸດ ເໜືອມະນຸດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

**ພຸດທະອຸທານ**

ເທວະດາທັງຫຼາຍ ຍ່ອມເຄົາລົບຮັກພິກຂຸ
ຜູ້ຖືບິນທະບາດເປັນຂໍ້ວັດປະຕິບັດ ຜູ້ລ້ຽງຕົນ ບໍ່ລ້ຽງຄົນອື່ນ
ຜູ້ໝັ້ນຄົງ ຜູ້ສະງົບ ມີສະຕິຢູ່ທຸກເມື່ອ

**ສັກກຸທານະສູດທີ ໗ ຈົບ**

# ໘. ປິນດະປາຕິກະສູດ

## ວ່າດ້ວຍການສົນທະນາເລື້ອງບິນທະບາດ

[໔໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພິກຂຸຈຳນວນຫຼາຍກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ມານັ່ງປະຊຸມພ້ອມກັນໃນກະເຣຣິມັນດົບ[໑] ໄດ້ສົນທະນາ ອັນຕະຣາກະຖາຂຶ້ນວ່າ ທ່ານຜູ້ມີອາຍຸທັງຫຼາຍ ພິກຂຸຜູ້ຖືບິນທະບາດເປັນຂໍ້ວັດປະຕິບັດ ເມື່ອກຳລັງບິນທະບາດ ຍ່ອມໄດ້ເຫັນຮູບທີ່ໜ້າພໍໃຈທາງຕາຕາມການອັນຄວນ ຍ່ອມໄດ້ຟັງສຽງ ທີ່ໜ້າພໍໃຈທາງຫູຕາມການອັນຄວນ ຍ່ອມໄດ້ດົມກິ່ນທີ່ໜ້າພໍໃຈທາງດັງຕາມການອັນຄວນ ຍ່ອມໄດ້ຊີມຣົດທີ່ໜ້າພໍໃຈທາງລີ້ນຕາມການອັນຄວນ ຍ່ອມໄດ້ຖືກຕ້ອງຜັດສະທີ່ໜ້າພໍໃຈ ທາງກາຍຕາມການອັນຄວນ ທ່ານຜູ້ມີອາຍຸທັງຫຼາຍ ພິກຂຸຜູ້ບິນທະບາດເປັນຂໍ້ວັດປະຕິບັດ ເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມຂະນະທ່ຽວໄປບິນທະບາດ ທ່ານຜູ້ມີອາຍຸທັງຫຼາຍ ຂໍພວກເຮົາຈົ່ງເປັນຜູ້ຖືບິນທະບາດເປັນຂໍ້ວັດປະຕິບັດເທີ້ນ ແມ່ນພວກເຮົາກໍຈັກໄດ້ເຫັນຮູບທີ່ໜ້າພໍໃຈທາງຕາຕາມການອັນຄວນ ຈັກໄດ້ຟັງສຽງທີ່ໜ້າພໍໃຈທາງຫູຕາມການອັນຄວນ ຈັກໄດ້ດົມກິ່ນໜ້າພໍໃຈທາງດັງຕາມການອັນຄວນ ຈັກໄດ້ຊີມຣົດທີ່ໜ້າພໍໃຈທາງລີ້ນຕາມການອັນຄວນ ຈັກໄດ້ຖືກຕ້ອງຜັດສະທີ່ໜ້າພໍໃຈທາງກາຍຕາມການອັນຄວນ ພວກເຮົາຈັກເປັນ ຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມຂະນະທ່ຽວໄປບິນທະບາດ

ອັນຕະຣາກະຖາຂອງພິກຂຸເຫຼົ່ານັ້ນໄດ້ຄ້າງໄວ້ພຽງທໍ່ນີ້

ຄັ້ງນັ້ນ ໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ ສະເດັດເຂົ້າໄປ ຍັງກະເຣຣິມັນດົບ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ພຣະຜູ້ມີພຣະພາກເຈົ້າເມື່ອປະທັບ ນັ່ງແລ້ວ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເວລານີ້ ທ່ານທັງຫຼາຍ ນັ່ງສົນທະນາກັນດ້ວຍເລື້ອງອັນໃດ ແລະເວົ້າເລື້ອງອັນໃດຄ້າງໄວ້

ພິກຂຸເຫຼົ່ານັ້ນ ຂາບທູນວ່າຂ້າແດ່ພຣະອົງຜູ້ຈະເລີນຂໍປະທານວະໂຣກາດ ຂ້າພຣະອົງທັງຫຼາຍ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ມານັ່ງປະຊຸມ ພ້ອມກັນໃນກະເຣຣິມັນດົບ ໄດ້ສົນທະນາອັນຕະຣາກະຖາຂຶ້ນວ່າ ທ່ານຜູ້ມີອາຍຸທັງຫຼາຍ ພິກຂຸຜູ້ຖືບິນທະບາດເປັນຂໍ້ວັດປະຕິບັດ ເມື່ອກຳລັງບິນທະບາດ ຍ່ອມໄດ້ເຫັນຮູບທີ່ໜ້າພໍໃຈທາງຕາຕາມການອັນຄວນ ຍ່ອມໄດ້ຟັງສຽງທີ່ໜ້າພໍໃຈທາງຫູຕາມການອັນຄວນ ຍ່ອມໄດ້ດົມກິ່ນທີ່ໜ້າພໍໃຈທາງດັງຕາມການ

ອັນຄວນ ຍ່ອມໄດ້ຊີມຣົດທີ່ໜ້າພໍໃຈທາງລີ້ນຕາມການອັນຄວນ ຍ່ອມໄດ້ ຖືກຕ້ອງຜັດສະທີ່ໜ້າພໍໃຈທາງກາຍຕາມການອັນຄວນ ທ່ານຜູ້ມີອາຍຸທັງຫຼາຍ ພິກຂຸຜູ້ບິນທະບາດ ເປັນຂໍ້ວັດປະຕິບັດເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມຂະນະທ່ຽວໄປບິນທະບາດ ທ່ານຜູ້ມີອາຍຸທັງຫຼາຍ ຂໍພວກເຮົາຈົ່ງເປັນຜູ້ຖືບິນທະບາດເປັນຂໍ້ວັດປະຕິບັດເທີ້ນ ແມ່ນພວກເຮົາກໍຈັກໄດ້ເຫັນຮູບທີ່ໜ້າພໍໃຈທາງຕາຕາມການອັນຄວນ ຈັກໄດ້ຟັງສຽງທີ່ໜ້າພໍໃຈທາງຫູຕາມການອັນຄວນ ຈັກໄດ້ດົມກິ່ນທີ່ໜ້າພໍໃຈທາງດັງຕາມການອັນຄວນ ຈັກໄດ້ຊີມຣົດທີ່ໜ້າພໍໃຈທາງລີ້ນຕາມການອັນຄວນ ຈັກໄດ້ຖືກຕ້ອງຜັດສະທີ່ໜ້າພໍໃຈທາງກາຍຕາມການອັນຄວນ ພວກເຮົາເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມຂະນະທ່ຽວໄປບິນທະບາດ ຂ້າແດ່ພຣະອົງຜູ້ຈະເລີນ ອັນຕະຣາກະຖານີ້ແລທີ່ຂ້າພຣະອົງທັງຫຼາຍເວົ້າຄ້າງໄວ້ ພໍດີພຣະຜູ້ມີພຣະພາກເຈົ້າສະເດັດມາເຖິງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ການທີ່ທ່ານທັງຫຼາຍເປັນກຸນລະບຸດມີສັດທາ ອອກຈາກເຮືອນບວດເປັນບັນພະຊິດແລ້ວພາກັນສົນທະນາເລື້ອງແນວນີ້ນັ້ນ ບໍ່ສົມຄວນເລີຍ ທ່ານທັງຫຼາຍນັ່ງປະຊຸມກັນແລ້ວຄວນເຮັດກິດພຽງ ໒ ຢ່າງ ຄື ການກ່າວທຳ ຫຼື ຄວາມເປັນຜູ້ມິດຢູ່ຄືພຣະອະຣິຍະ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນ ວ່າ

## ພຸດທະອຸທານ

ເທວະດາທັງຫຼາຍຍ່ອມເຄົາລົບຮັກພິກຂຸ
ຜູ້ຖືບິນທະບາດເປັນຂໍ້ວັດປະຕິບັດ ຜູ້ລ້ຽງຕົນ ບໍ່ລ້ຽງຄົນອື່ນ
ຜູ້ໝັ້ນຄົງ ຫາກພິກຂຸບໍ່ອາໄສສຽງສັນເສີນ[໑]

**ປິນດະປາຕິກະສູດທີ ໘ ຈົບ**

## ໙. ສິບປະສູດ

## ວ່າດ້ວຍການສົນທະນາເລື້ອງສິລະປະ

[໔໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພິກຂຸຈຳນວນຫຼາຍກັບຈາກບິນທະບາດຫຼັງ

ຈາກສັນ ອາຫານສຳເລັດແລ້ວ ມານັ່ງປະຊຸມພ້ອມກັນໃນມົນດົບ ໄດ້ສົນທະນາອັນຕະຣາກະຖາຂຶ້ນວ່າ ທ່ານຜູ້ມີອາຍຸທັງຫຼາຍ ໃຜຮູ້ຈັກສິລະປະແດ່ ໃຜສຶກສາສິລະປະອັນໃດມາແດ່ ສິລະປະຊະນິດໃດເລີດກວ່າສິລະປະທັງຫຼາຍ

ບັນດາພິກຂຸເຫຼົ່ານັ້ນ ລາງພວກກ່າວວ່າ ສິລະປະວ່າດ້ວຍຊ້າງເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍມ້າເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍລົດເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍທະນູເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍອາວຸດ[໖]ເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍການຄຳນວນດ້ວຍວິທີນັບນິ້ວເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍການຄຳນວນດ້ວຍວິທີຄິດໃນໃຈເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍການຄຳນວນດ້ວຍວິທີອະນຸມານດ້ວຍສາຍຕາເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍການແຕ້ມເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍສັນທະລັກສະນະເລີດກວ່າ ສິລະປະທັງຫຼາຍລາງພວກກ່າວວ່າສິລະປະວ່າດ້ວຍໂລກາຍະຕະສາດ[໗]ເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍວິຊາກົດໝາຍເລີດກວ່າສິລະປະທັງຫຼາຍ ພິກຂຸເຫຼົ່ານັ້ນໄດ້ສົນທະນາອັນຕະຣາກະຖາກັນຄ້າງໄວ້ພຽງທີ່ນີ້

ຄັ້ງນັ້ນ ໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີກຫຼີກ ສະເດັດເຂົ້າໄປ ຍັງມົນດົບ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ພຣະຜູ້ມີພຣະພາກເຈົ້າເມື່ອປະທັບນັ່ງແລ້ວ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າພິກຂຸທັງຫຼາຍເວລານີ້ທ່ານທັງຫຼາຍສົນທະນາກັນດ້ວຍເລື້ອງອັນໃດ ແລະເວົ້າເລື້ອງອັນໃດຄ້າງໄວ້

ພິກຂຸເຫຼົ່ານັ້ນ ຂາບທູນວ່າຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດຂ້າພຣະອົງທັງຫຼາຍ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ມານັ່ງປະຊຸມພ້ອມກັນໃນມົນດົບໄດ້ສົນທະນາອັນຕະຣາກະຖາຂຶ້ນວ່າ ທ່ານທັງຫຼາຍ ໃຜຮູ້ຈັກສິລະປະແດ່ ໃຜສຶກສາສິລະປະອັນໃດມາແດ່ ສິລະປະຊະນິດໃດເລີດກວ່າສິລະປະທັງຫຼາຍ ບັນດາພວກຂ້າພຣະອົງນັ້ນ ລາງພວກກ່າວວ່າ ສິລະປະວ່າດ້ວຍຊ້າງເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍມ້າເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍລົດເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍທະນູເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍອາວຸດເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍການຄຳນວນດ້ວຍວິທີນັບນິ້ວເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍການຄຳນວນດ້ວຍວິທີຄິດໃນໃຈເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍການຄຳນວນດ້ວຍວິທີອະນຸມານດ້ວຍສາຍຕາເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍການແຕ້ມ

ເລີດກວ່າສິລະປະທັງຫຼາຍລາງພວກກ່າວວ່າ ສິລະປະວ່າດ້ວຍສັນທະລັກສະນະເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍໂລກາຍະຕະສາດເລີດກວ່າສິລະປະທັງຫຼາຍ ລາງພວກກ່າວວ່າ ສິລະປະວ່າດ້ວຍວິຊາກົດໝາຍເລີດກວ່າສິລະປະທັງຫຼາຍ ຂ້າແດ່ພຣະອົງຜູ້ຈະເລີນ ອັນຕະຣາກະຖານີ້ແລ ທີ່ຂ້າພຣະອົງທັງຫຼາຍເວົ້າຄ້າງໄວ້ ພໍດີພຣະຜູ້ມີພຣະພາກເຈົ້າສະເດັດມາເຖິງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ການທີ່ທ່ານທັງຫຼາຍເປັນກຸນລະບຸດ ມີສັດທາອອກຈາກເຮືອນບວດເປັນບັນພະຊິດແລ້ວພາກັນສົນທະນາເລື່ອງແນວນີ້ ບໍ່ສົມຄວນເລີຍ ທ່ານທັງຫຼາຍນັ່ງປະຊຸມກັນແລ້ວຄວນເຮັດກິດພຽງ ໒ ຢ່າງ ຄື ການກ່າວທຳ ຫຼື ຄວາມເປັນຜູ້ມິດຢູ່ຄືພຣະອະຣິຍະ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ

ຜູ້ໃດບໍ່ອາໄສສິລະປະລ້ຽງຊີບ ເປັນຢູ່ລຽບງ່າຍ
ມຸ້ງພ່ຳເພັງປະໂຫຍດ ສັງລວມອິນຊີ
ລຸດພົ້ນແລ້ວໃນທຳທັງປວງ[๑]
ບໍ່ຕ້ອງແລ່ນໄປໃນໂອກະ[๒] ບໍ່ມີການຍຶດຖືວ່າຂອງເຮົາ
ບໍ່ມີຄວາມຫວັງ ກຳຈັດມານໄດ້ແລ້ວ ທ່ຽວໄປຜູ້ດຽວ
ຜູ້ນັ້ນຊື່ວ່າ ພິກຂຸ

**ສິບປະສູດທີ ໙ ຈົບ**

## ໑໐. ໂລກະສູດ

## ວ່າດ້ວຍສັດໂລກ

[໓໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າເມື່ອທຳອິດຕັດສະຮູ້ ປະທັບຢູ່ ຄ່ວງຕົ້ນໂພ ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງໂດຍບັນລັງດຽວສະເຫວີຍວິມຸດຕິສຸກຢູ່ເປັນເວລາ ໗ ມື້

ເມື່ອລ່ວງໄປ ໆ ມື້ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກສະມາທິນັ້ນແລ້ວ ຊົງກວດເບິ່ງສັດໂລກດ້ວຍພຸດທະຈັກຂຸ ໄດ້ທອດພຣະເນດເຫັນໝູ່ສັດກຳລັງເດືອດຮ້ອນດ້ວຍຄວາມທຸກຫຼວງຫຼາຍ ແລະຖືກຄວາມຮ້ອນຮົນຫຼາຍໆທີ່ເກີດຈາກຣາຄະແດ່ ເກີດຈາກໂທສະແດ່ ເກີດຈາກໂມຫະແດ່ຫຸ້ມແຜດເຜົາຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

## ພຸດທະອຸທານ

ສັດໂລກນີ້ເກີດຄວາມຮ້ອນຮົນ ຖືກທຸກຂະເວທະນາກະທົບແລ້ວ
ກ່າວທຸກຂະເວທະນາວ່າເປັນຂອງຕົນ
ຍ້ອນສັດໂລກນີ້ສຳຄັນສິ່ງໃດວ່າທ່ຽງ ສິ່ງນັ້ນກັບເປັນແນວອື່ນ
ສັດໂລກມີພາວະບໍ່ໝັ້ນຄົງ ຕິດຢູ່ໃນພົບ
ໝົກມຸ້ນຢູ່ໃນພົບ ເພີດເພີນຢູ່ໃນພົບ
ພົບທີ່ສັດໂລກເພີດເພີນຈັດເປັນໄພ
ໄພທີ່ສັດໂລກຢ້ານ ຈັດເປັນທຸກ
ບຸກຄົນຕ້ອງພ່ຳເພັງພົມມະຈັນ[๑]ນີ້ທີ່ນັ້ນ ເພື່ອລະພົບໃຫ້ໄດ້

ສະມະນະ ຫຼື ພາມເຫຼົ່າໃດ ເຫຼົ່າໜຶ່ງກ່າວເຖິງຄວາມລຸດພົ້ນຈາກພົບດ້ວຍພົບ[໒]ເຮົາຖືວ່າສະມະນະຫຼືພາມເຫຼົ່ານັ້ນທັງໝົດບໍ່ໄດ້ລຸດພົ້ນຈາກພົບທັງປວງອັນໜຶ່ງ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ກ່າວເຖິງການອອກຈາກພົບດ້ວຍວິພົບ[໓]ເຮົາຖືວ່າສະມະນະຫຼືພາມເຫຼົ່ານັ້ນທັງໝົດບໍ່ໄດ້ອອກຈາກພົບ

ຍ້ອນອາໄສອຸປະທິ[໔]ທັງປວງ ທຸກນີ້ຈຶ່ງເກີດມີຂຶ້ນ ຍ້ອນອຸປາທານທັງໝົດສິ້ນໄປທຸກຈຶ່ງບໍ່ເກີດ ທ່ານຈົ່ງເບິ່ງສັດໂລກນີ້ ສັດເປັນຈຳນວນຫຼາຍຖືກອະວິດຊາຄອບງຳ ຫຼື ມົວຫຼົງຕິດໃຈໃນສັດນຳກັນ ຈຶ່ງລຸດພົ້ນໄປຈາກພົບບໍ່ໄດ້ ຄວາມຈິງ ພົບແນວໃດແນວໜຶ່ງທຸກຊັ້ນລ້ວນແຕ່ບໍ່ທ່ຽງເປັນທຸກ ມີຄວາມຜັນແປໄປເປັນທຳມະດາ

ບຸກຄົນເມື່ອຮູ້ເຫັນປັນຈະຂັນຄືພົບນີ້
ຕາມຄວາມເປັນຈິງຢ່າງຖ່ອງແທ້ ດ້ວຍປັນຍາອັນຖືກຕ້ອງ
ຍ່ອມລະພະວະຕັນຫາໄດ້ ທັງບໍ່ຍິນດີວິພະວະຕັນຫາ
ຍ້ອນຕັນຫາທັງຫຼາຍສິ້ນໄປໂດຍປະການທັງປວງ
ຄວາມດັບກິເລດບໍ່ເຫຼືອດ້ວຍວິຣາຄະ ຄືນິບພານຈຶ່ງມີ
ຍ້ອນບໍ່ມີຄວາມຢຶດໝັ້ນ ພິກຂຸຜູ້ນິບພານແລ້ວ ຈຶ່ງບໍ່ມີພົບໃໝ່

ພິກຂຸນັ້ນໄດ້ຊື່ວ່າຄອບງໍາມານໄດ້ ຊະນະສົງຄາມໄດ້
ກ້າວລ່ວງພົບທັງປວງໄດ້ ເປັນຜູ້ໝັ້ນຄົງ ຢ່າງນີ້

**ໂລກະສູດທີ ໑໐ ຈົບ**

**ນັນທະວັກທີ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໔. ເມຄິຍະວັກ

## ໝວດວ່າດ້ວຍພຣະເມຄິຍະເຖຣະ

## ໑. ເມຄິຍະສູດ[1]

### ວ່າດ້ວຍພຣະເມຄິຍະເຖຣະ[2]

[໓໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຈາລິກະບັນພົດ ເຂດເມືອງຈາລິກາ ສະໄໝນັ້ນ ທ່ານພຣະເມຄິຍະເປັນອຸປັດຖາກຂອງພຣະຜູ້ມີພຣະພາກເຈົ້າ ຄັ້ງນັ້ນແລ ທ່ານພຣະ ເມຄິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງປາຖະໜາຈະເຂົ້າໄປສູ່ຊັນຕຸຄາມເພື່ອບິນທະບາດ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ເມຄິຍະ ຈົ່ງກຳນົດເວລາທີ່ສົມຄວນ ໃນບັດນີ້ເທີ້ນ

ຄັ້ງນັ້ນ ໃນເວລາເຊົ້າ ທ່ານພຣະເມຄິຍະຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປ ຍັງຊັນຕຸຄາມເພື່ອບິນທະບາດ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ຍ່າງໄປຕາມຝັ່ງແມ່ນ້ຳກິມິກາລາ ຂະນະທີ່ທ່ຽວຍ່າງພັກຜ່ອນຢູ່ທີ່ຝັ່ງແມ່ນ້ຳກິມິກາລານັ້ນ ໄດ້ເຫັນປ່າໝາກມ່ວງທີ່ງົດງາມ ໜ້າອອນຊອນ ຈຶ່ງມີຄວາມຄິດດັ່ງນີ້ວ່າ ປ່າໝາກມ່ວງນີ້ຊ່າງງົດງາມ ໜ້າອອນຊອນຈິງ ເໝາະແກ່ການພໍ່າເພັງພຽນສຳລັບກຸນລະບຸດຜູ້ຕ້ອງການພໍ່າເພັງພຽນ ໂດຍແທ້ ຖ້າພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດເຮົາ ເຮົາຈະກັບມາພໍ່າເພັງພຽນໃນປ່າໝາກມ່ວງນີ້

ຕໍ່ມາ ທ່ານພຣະເມຄິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ເມື່ອເຊົ້ານີ້ ຂ້າພຣະອົງຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ຊັນຕຸຄາມເພື່ອບິນທະບາດ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ຍ່າງໄປຕາມຝັ່ງແມ່ນ້ຳກິມິກາລາ ຂະນະທີ່ທ່ຽວຍ່າງພັກຜ່ອນຢູ່ທີ່ຝັ່ງແມ່ນ້ຳກິມິກາລານັ້ນໄດ້ເຫັນປ່າໝາກມ່ວງທີ່ງົດງາມ ໜ້າອອນຊອນ ຈຶ່ງມີຄວາມຄິດດັ່ງນີ້ວ່າ ປ່າໝາກມ່ວງນີ້ຊ່າງງົດງາມ ໜ້າອອນຊອນແທ້ ເໝາະແກ່ການພໍ່າເພັງພຽນສຳລັບກຸນລະບຸດຜູ້ຕ້ອງການພໍ່າເພັງພຽນໂດຍແທ້ ຖ້າພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດເຮົາ ເຮົາຈະກັບມາພໍ່າເພັງພຽນໃນປ່າໝາກມ່ວງນີ້ ຖ້າພຣະຜູ້

ມີພຣະພາກເຈົ້າຊົງອະນຸຍາດຂ້າພຣະອົງ ຂ້າພຣະອົງຈະກັບໄປພໍ່າເພັງພຽນໃນປ່າໝາກມ່ວງນັ້ນ ຂ້ານ້ອຍ

ເມື່ອທ່ານພຣະເມຄິຍະຂາບທູນແບບນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານດັ່ງນີ້ວ່າ ເມຄິຍະ ເຮົາຢູ່ຄົນດຽວ ທ່ານຈົ່ງຖ້າຈົນກວ່າພິກຂຸອົງອື່ນຈະມາ[໑]

ແມ່ນເທື່ອທີ ໔ ທ່ານພຣະເມຄິຍະຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງມີກິດທີ່ຈະຕ້ອງເຮັດໃຫ້ຍິ່ງຂຶ້ນໄປອີກ[໒] ທັງບໍ່ມີການສັ່ງສົມ ກິດທີ່ເຮັດແລ້ວ[໓] ສ່ວນຂ້າພຣະອົງຍັງມີກິດທີ່ຈະຕ້ອງເຮັດໃຫ້ຍິ່ງຂຶ້ນໄປອີກ ທັງຍັງຕ້ອງສັ່ງສົມກິດທີ່ເຮັດແລ້ວ ຖ້າພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຂ້າພຣະອົງ ຂ້າພຣະອົງຈະກັບໄປພໍ່າເພັງພຽນໃນປ່າໝາກມ່ວງນັ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ເມຄິຍະ ເຮົາຢູ່ຄົນດຽວ ທ່ານຈົ່ງຖ້າຈົນກວ່າພິກຂຸອົງອື່ນຈະມາ

ແມ່ນເທື່ອທີ ໕ ທ່ານພຣະເມຄິຍະກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງ ຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າບໍ່ຊົງມີກິດທີ່ຈະຕ້ອງເຮັດໃຫ້ຍິ່ງຂຶ້ນໄປອີກ ທັງບໍ່ມີການສັ່ງສົມກິດ ທີ່ເຮັດແລ້ວສ່ວນຂ້າພຣະອົງຍັງມີກິດທີ່ຈະຕ້ອງເຮັດໃຫ້ຍິ່ງຂຶ້ນໄປອີກທັງຍັງຕ້ອງສັ່ງສົມກິດ ທີ່ເຮັດແລ້ວ ຖ້າພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຂ້າພຣະອົງ ຂ້າພຣະອົງຈະກັບໄປພໍ່າເພັງພຽນໃນປ່າໝາກມ່ວງນັ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ ເມຄິຍະ ເມື່ອທ່ານເວົ້າວ່າ ຈະໄປພໍ່າເພັງພຽນ ເຮົາຈະເພິ່ງວ່າອັນໃດ ທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ

ລຳດັບນັ້ນ ທ່ານພຣະເມຄິຍະລຸກຈາກບ່ອນນັ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທຳປະທັກຂິນແລ້ວເຂົ້າໄປສູ່ປ່າໝາກມ່ວງນັ້ນ ອາໄສປ່າໝາກມ່ວງນັ້ນນັ່ງພັກກາງເວັນຢູ່ເຫງົ້າໄມ້ໝາກມ່ວງ ຕົ້ນໜຶ່ງ ເມື່ອທ່ານພັກຢູ່ໃນປ່າໝາກມ່ວງນັ້ນ ບາບອະກຸສົນວິຕົກ ໓ ປະການ ຄື ກາມວິຕົກ (ຄວາມນຶກໃນທາງກາມ) ພະຍາບາດວິຕົກ (ຄວາມນຶກໃນທາງພະຍາບາດ) ວິຫິງສາວິຕົກ (ຄວາມນຶກໃນທາງບຽດບຽນ) ເກີດຂຶ້ນສ່ວນຫຼາຍ

ຄັ້ງນັ້ນແລ ທ່ານພຣະເມຄິຍະໄດ້ມີຄວາມຄິດດັ່ງນີ້ວ່າ ໜ້າອັດສະຈັນຈິງ ບໍ່ເຄີຍ ຜາກົດເຮົາອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາແທ້ ໆ ແຕ່ປານນັ້ນກໍຍັງຖືກບາບອະກຸສົນວິຕົກ ໓ ປະການ ຄື ກາມວິຕົກ ພະຍາບາດວິຕົກ ວິຫິງສາວິຕົກ ກຸ້ມລຸມຈິດໄດ້

ຄັ້ງນັ້ນ ໃນເວລາຄໍ່າ ທ່ານພຣະເມຄິຍະກໍອອກຈາກບ່ອນຫຼີບຫຼີກ ເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ເມື່ອຂ້າພຣະອົງພັກຢູ່ໃນປ່າໝາກມ່ວງນັ້ນ ບາບອະກຸສົນວິຕົກ ໓ ປະການ ຄື ກາມວິຕົກ ພະຍາບາດວິຕົກ ວິຫິງສາວິຕົກ ເກີດຂຶ້ນສ່ວນຫຼາຍ ຂ້າພຣະອົງຈຶ່ງມີຄວາມຄິດດັ່ງນີ້ວ່າ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ເຮົາອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາແທ້ ໆ ແຕ່ປານນັ້ນກໍຍັງຖືກບາບອະກຸສົນວິຕົກ ໓ ປະການ ຄື ກາມວິຕົກ ພະຍາບາດວິຕົກ ວິຫິງສາວິຕົກ ກຸ້ມລຸມຈິດໄດ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ເມຄິຍະ ທໍາ ໕ ປະການ ຍ່ອມເປັນໄປເພື່ອຄວາມແກ່ກ້າແຫ່ງເຈໂຕວິມຸດຕິທີ່ຍັງບໍ່ແກ່ກ້າ

ທໍາ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃນທໍາວິໄນນີ້ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ນີ້ເປັນທໍາ ປະການທີ ໑ ທີ່ເປັນໄປເພື່ອຄວາມແກ່ກ້າແຫ່ງເຈໂຕວິມຸດຕິທີ່ຍັງບໍ່ແກ່ກ້າ

໒. ພິກຂຸໃນທໍາວິໄນນີ້ເປັນຜູ້ມີສິນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ເປັນທໍາປະການທີ ໒ ທີ່ເປັນໄປເພື່ອຄວາມແກ່ກ້າແຫ່ງເຈໂຕວິມຸດຕິທີ່ຍັງບໍ່ແກ່ກ້າ

໓. ພິກຂຸໃນທໍາວິໄນນີ້ເປັນຜູ້ໄດ້ກະຖາເປັນເຄື່ອງຂັດເກົາຢ່າງຍິ່ງ[໑] ທີ່ເປັນສັບປາຍະແຫ່ງຄວາມເປັນໄປຂອງຈິດ ເປັນໄປເພື່ອຄວາມເບື່ອໜ່າຍແນວດຽວ ເພື່ອຄາຍກໍາໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ຄື ອັບປິດສະກະຖາ (ເລື້ອງຄວາມມັກໜ້ອຍ) ສັນຕຸດຖິກະຖາ (ເລື້ອງຄວາມສັນໂດດ) ປະວິເວກກະຖາ (ເລື້ອງຄວາມສະຫງັດ) ອະສັງສັກຄະກະຖາ (ເລື້ອງ ຄວາມບໍ່ຄຸກຄີ) ວິຣິຍາຣໍາພະກະຖາ (ເລື້ອງການຜາຣົບຄວາມພຽນ) ສີລະກະຖາ (ເລື້ອງສິນ) ສະມາທິກະຖາ (ເລື້ອງສະມາທິ) ປັນຍາກະຖາ (ເລື້ອງປັນຍາ) ວິມຸດຕິກະຖາ (ເລື້ອງວິມຸດຕິ) ວິມຸດຕິຍານ ທັດສະນະກະຖາ (ເລື້ອງຄວາມຮູ້ ຄວາມເຫັນໃນວິມຸດຕິ) ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລໍາບາກ ນີ້ເປັນທໍາປະການທີ ໓ ທີ່ເປັນໄປເພື່ອຄວາມແກ່ກ້າແຫ່ງເຈໂຕວິມຸດຕິທີ່ຍັງບໍ່ແກ່ກ້າ

໔. ພິກຂຸໃນທຳວິໄນນີ້ເປັນຜູ້ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖິ້ມເບົາໃນກຸສົນທຳທັງຫຼາຍ ນີ້ເປັນທຳປະການທີ ໔ ທີ່ເປັນໄປເພື່ອຄວາມແກ່ກ້າແຫ່ງເຈໂຕວິມຸດຕິທີ່ຍັງບໍ່ແກ່ກ້າ

໕. ພິກຂຸໃນທຳວິໄນນີ້ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ນີ້ເປັນທຳປະການທີ ໕ ທີ່ເປັນໄປເພື່ອຄວາມແກ່ກ້າແຫ່ງເຈໂຕວິມຸດຕິທີ່ຍັງບໍ່ແກ່ກ້າ

ເມຄິຍະ ທຳ ໕ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມແກ່ກ້າແຫ່ງເຈໂຕວິມຸດຕິ ທີ່ຍັງບໍ່ແກ່ກ້າ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງໄດ້ຂໍ້ນີ້ ຄື ຈັກເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກ ໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງໄດ້ຂໍ້ນີ້ ຄື ຈັກເປັນຜູ້ໄດ້ກະຖາ ເປັນເຄື່ອງຂັດເກົາຢ່າງຍິ່ງທີ່ເປັນສັບປາຍະແຫ່ງຄວາມເປັນໄປຂອງຈິດ ເປັນໄປເພື່ອຄວາມເບື່ອໜ່າຍແນວດຽວ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ຄື ອັບປິດສະກະຖາ ສັນຕຸດຖິກະຖາ ປະວິເວກກະຖາ ອະສັງສັກຄະກະຖາ ວິຣິຍາຣຳພະກະຖາ ສີລະກະຖາ ສະມາທິກະຖາ ປັນຍາກະຖາ ວິມຸດຕິກະຖາ ວິມຸດຕິຍານທັດສະນະກະຖາ ຕາມຄວາມ ປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງໄດ້ຂໍ້ນີ້ ຄື ຈັກເປັນຜູ້ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖິ້ມເບົາໃນກຸສົນທຳທັງຫຼາຍ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງໄດ້ຂໍ້ນີ້ ຄື ຈັກເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ

ເມຄິຍະ ພິກຂຸນັ້ນດຳລົງຢູ່ໃນທຳ ໕ ປະການນີ້ແລ້ວ ເພິ່ງຈະເລີນທຳ ໔ ປະການໃຫ້ຍິ່ງຂຶ້ນໄປອີກ ຄື

໑. ເພິ່ງຈະເລີນອະສຸພະເພື່ອລະຣາຄະ
໒. ເພິ່ງຈະເລີນເມດຕາເພື່ອລະພະຍາບາດ
໓. ເພິ່ງຈະເລີນອານາປານະສະຕິເພື່ອຕັດວິຕົກ
໔. ເພິ່ງຈະເລີນອະນິດຈະສັນຍາເພື່ອຖອນອັດສະມິມານະ[1]

ເມຄິຍະ ອະນັດຕະສັນຍາຍ່ອມຜາກົດແກ່ພິກຂຸຜູ້ໄດ້ອະນິດຈະສັນຍາ ພິກຂຸຜູ້ໄດ້ອະນັດຕະສັນຍາ ຍ່ອມບັນລຸນິບພານທີ່ຖອນອັດສະມິມານະໄດ້ໃນປັດຈຸບັນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

## ພຸດທະອຸທານ[2]

ວິຕົກທີ່ຫຍາບ[3]ແລະວິຕົກທີ່ລະອຽດ[4]
ເປັນໄປແລ້ວ ເຮັດໃຈໃຫ້ຟຸ້ງຊ່ານ
ບຸກຄົນຜູ້ມີຈິດສັບສົນ ບໍ່ຮູ້ວິຕົກແຫ່ງໃຈເຫຼົ່ານີ້
ຍ່ອມແລ່ນໄປສູ່ພົບນ້ອຍພົບໃຫຍ່
ສ່ວນຜູ້ທີ່ພຽນລະວັງ ມີສະຕິຢູ່ສະເໝີ
ຮູ້ເທົ່າທັນວິຕົກທີ່ເກີດແກ່ຈິດເຫຼົ່ານີ້ ຍ່ອມສັງລວມລະວັງ
ບຸກຄົນຜູ້ຕັດສະຮູ້ແລ້ວທັ່ງນັ້ນ
ຍ່ອມລະວິຕົກທີ່ເປັນໄປແລ້ວເຮັດໃຈໃຫ້ຟຸ້ງຊ່ານໄດ້ໂດຍບໍ່ເຫຼືອ

**ເມຄິຍະສູດທີ ໑ ຈົບ**

# ໒. ອຸດທະຕະສູດ

## ວ່າດ້ວຍພິກຂຸຜູ້ມີຈິດຟຸ້ງຊ່ານ

[໓໒] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ປ່າສາລະວັນ ເຊິ່ງເປັນທາງເຂົ້ານະຄອນກຸຊິນາຣາຂອງພວກເຈົ້າມັນລະ ສະໄໝນັ້ນ ພິກຂຸຈຳນວນຫຼາຍເປັນຜູ້ຟຸ້ງຊ່ານ ຖືໂຕ ໂລເລ ປາກບໍ່ຂອບ ເວົ້າພ່ຳເພື້ອ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ ຢູ່ຕູບໃນປ່າ ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນພິກຂຸເຫຼົ່ານັ້ນ ເປັນຜູ້ຟຸ້ງຊ່ານ ຖືໂຕ ໂລເລ ປາກບໍ່ຂອບ ເວົ້າພ່ຳເພື້ອ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີຢູ່ຕູບໃນປ່າ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ[១]

ພິກຂຸຜູ້ບໍ່ຮັກສາກາຍ[៤] ມີຄວາມເຫັນຜິດ
ຖືກຖີນະມິດທະ[៣]ຄອບງຳ ຍ່ອມໄປສູ່ອຳນາດມານ[៤]
ຍ້ອນແນວນັ້ນ ພິກຂຸຄວນຮັກສາຈິດ[៥]
ມີຄວາມຄິດຖືກເປັນອາລົມ
ມຸ້ງຄວາມເຫັນຖືກຕ້ອງເປັນສຳຄັນ
ຮູ້ຄວາມເກີດຂຶ້ນແລະຄວາມເສື່ອມໄປຂອງປັນຈະຂັນ
ຄອບງຳຖີນະມິດທະໄດ້ ກໍສາມາດລະທຸກຄະຕິໄດ້ທັງໝົດ

**ອຸດທະຕະສູດທີ ໘ ຈົບ**

# ៩. ໂຄປາລະກະສູດ

## ວ່າດ້ວຍຄົນລ້ຽງງົວ

[៣៩] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງ ໝູ່ໃຫຍ່ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດແວລົງຂ້າງທາງ ເຂົ້າໄປຄ່ວງໄມ້ຕົ້ນໜຶ່ງ ແລ້ວປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ລຳດັບນັ້ນ ຄົນລ້ຽງງົວຄົນໜຶ່ງ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ຄົນລ້ຽງງົວນັ້ນເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

ຄົນລ້ຽງງົວນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງນ້ອມໃຈໃຫ້ຍາກ ຮັບເອົາໄປ ປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ໄດ້ຂາບ ທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາ

ກເຈົ້າພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງຂ້າພຣະອົງໃນມື້ອື່ນນີ້ເທີ້ນ ຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນດ້ວຍພຣະອາການດຸດສະນີ ຄົນລ້ຽງງົວນັ້ນ ຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກບ່ອນນັ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທຳປະທັກຂິນແລ້ວຈາກໄປ

ເມື່ອຄືນນັ້ນ ຜ່ານໄປ ຄົນລ້ຽງງົວນັ້ນສັ່ງໃຫ້ຄົນຈັດເຂົ້າປາຍາດມີນ້ຳໜ້ອຍແລະເນີຍໃສໃໝ່ ຢ່າງພຽງພໍໄວ້ໃນນິເວດຂອງຕົນແລ້ວສັ່ງຄົນໄປຂາບທູນພັດການວ່າ ຂ້າແດ່ພຣະອົງຜູ້ຈະເລີນ ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ ຂ້ານ້ອຍ ຂະນະນັ້ນ ໃນເວລາເຊົ້າພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປສູ່ເຮືອນຂອງຄົນລ້ຽງງົວນັ້ນ ພ້ອມດ້ວຍພິກຂຸສົງ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ຄົນລ້ຽງງົວໄດ້ນຳເຂົ້າປາຍາດມີນ້ຳໜ້ອຍແລະເນີຍໃສໃໝ່ ປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານ ໃຫ້ອີ່ມໜຳສຳຮານດ້ວຍຕົນເອງ ເມື່ອພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດ ຊົງວາງພຣະຫັດແລ້ວ ຄົນລ້ຽງງົວຈຶ່ງເລືອກນັ່ງຢູ່ບ່ອນທີ່ສົມຄວນບ່ອນໃດບ່ອນໜຶ່ງເຊິ່ງຕ່ຳກວ່າ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຂົາເຫັນແຈ້ງ ນ້ອມໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວຊົງລຸກຈາກພຸດທະອາດສະເດັດຈາກໄປ

ຫຼັງຈາກພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ຊາຍຄົນໜຶ່ງໄດ້ທຳຮ້າຍຄົນລ້ຽງງົວນັ້ນຈົນເສຍຊີວິດ ໃນລະຫວ່າງເຂດເຮືອນ

ຕໍ່ມາ ພິກຂຸຈຳນວນຫຼາຍພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ໄດ້ຂ່າວວ່າ ຄົນລ້ຽງງົວຜູ້ນຳເຂົ້າປາຍາດແລະເນີຍໃສໃໝ່ ປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານໃຫ້ອີ່ມໜຳສຳຮານດ້ວຍຕົນເອງ ໃນມື້ນີ້ນັ້ນ ໄດ້ຖືກຊາຍຄົນໜຶ່ງທຳຮ້າຍຈົນເສຍຊີວິດໃນລະຫວ່າງເຂດເຮືອນ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

**ພຸດທະອຸທານ**

ຈິດທີ່ຕັ້ງໄວ້ຜິດເພິ່ງເຮັດໃຫ້ໄດ້ຮັບຄວາມເສຍຫາຍ
ຍິ່ງກວ່າຄວາມເສຍຫາຍທີ່ໂຈນເຫັນໂຈນ
ຫຼືຜູ້ຈອງເວນເຫັນຜູ້ຈອງເວນ ຈະເພິ່ງເຮັດໃຫ້ແກ່ກັນ[໑]

**ໂຄປາລະກະສູດທີ ໓ ຈົບ**

# ໔. ຍັກຂະປະຫາຣະສູດ

## ວ່າດ້ວຍຍັກຕີຫົວພຣະສາຣີບຸດເຖຣະ

[໓໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເວລຸວັນ ກະລັນທະກະນິວາປະສະຖານ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ທ່ານພຣະສາຣີບຸດແລະທ່ານພຣະມະຫາໂມກຄັນລານະຢູ່ທີ່ ກະໂປຕະກັນທະຣາວິຫານ໌ ໃນຄືນເດືອນເພັນ ທ່ານພຣະສາຣີບຸດແຖຜົມໃໝ່ ໆ ນັ່ງເຂົ້າສະມາທິ ຢູ່ກາງແຈ້ງ

ຂະນະນັ້ນມີຍັກ ໒ ຕົນເປັນສະຫາຍກັນ ເດີນທາງຈາກທິດເໜືອໄປທາງທິດໃຕ້ເພື່ອເຮັດກິດ ທີ່ຈະຕ້ອງເຮັດບາງຢ່າງ ຍັກທັງສອງນັ້ນໄດ້ເຫັນທ່ານພຣະສາຣີບຸດແຖຜົມໃໝ່ ໆ ນັ່ງເຂົ້າສະມາທິຢູ່ກາງແຈ້ງ ຍັກຕົນໜຶ່ງໄດ້ກ່າວກັບຍັກອີກຕົນໜຶ່ງວ່າ ສະຫາຍ ເຮົາຄິດຢາກຕີຫົວສະມະນະອົງນີ້ ເມື່ອຍັກຕົນນັ້ນກ່າວແນວນີ້ ຍັກຕົນໜຶ່ງຈຶ່ງກ່າວດັ່ງນີ້ວ່າ ຢ່າເລີຍສະຫາຍ ທ່ານຢ່າທຳຮ້າຍສະມະນະເລີຍ ສະມະນະອົງນັ້ນມີຄຸນຍິ່ງ ມີລິດຫຼາຍ ມີອານຸພາບຫຼາຍ

ແມ່ນເທື່ອທີ ໒ ຍັກຕົນນັ້ນໄດ້ກ່າວກັບຍັກຕົນໜຶ່ງດັ່ງນີ້ວ່າ ສະຫາຍ ເຮົາຄິດຢາກຕີຫົວສະມະນະອົງນີ້

ຍັກຕົນໜຶ່ງໄດ້ກ່າວກັບຍັກຕົນນັ້ນດັ່ງນີ້ວ່າ ຢ່າເລີຍສະຫາຍ ທ່ານຢ່າທຳຮ້າຍສະມະນະເລີຍ ສະມະນະອົງນັ້ນມີຄຸນຍິ່ງ ມີລິດຫຼາຍ ມີອານຸພາບຫຼາຍ

ແມ່ນເທື່ອທີ ໓ ຍັກຕົນນັ້ນໄດ້ກ່າວກັບຍັກຕົນໜຶ່ງດັ່ງນີ້ວ່າ ສະຫາຍ ເຮົາຄິດຢາກຕີຫົວສະມະນະອົງນີ້

ຍັກຕົນໜຶ່ງກໍໄດ້ກ່າວກັບຍັກຕົນນັ້ນດັ່ງນີ້ວ່າ ຢ່າເລີຍສະຫາຍ ທ່ານຢ່າທຳຮ້າຍສະມະນະເລີຍ ສະມະນະອົງນັ້ນມີຄຸນຍິ່ງ ມີລິດຫຼາຍ ມີອານຸພາບຫຼາຍ

ຄັ້ງນັ້ນ ຍັກນັ້ນບໍ່ເຊື່ອຍັກຜູ້ເປັນສະຫາຍ ຈຶ່ງໄດ້ຕີຫົວທ່ານພຣະສາຣີບຸດເຖຣະ ເປັນການຕີຢ່າງຮຸນແຮງ ການຕີເຊັ່ນນັ້ນ ສາມາດເຮັດໃຫ້ຊ້າງສູງ ໗-໗ ສອກຈົມດິນໄດ້ ຫຼືສາມາດທຳລາຍຍອດພູມະຫຶມາໃຫ້ທະລາຍລົງໄດ້ ແລະທັນໃດນັ້ນເອງ ຍັກຕົນນັ້ນໄດ້ ຮ້ອງວ່າ ໂອຍ ຮ້ອນຫຼາຍ ແລ້ວລົ້ມຕົກໄປສູ່ມະຫານະຣົກໃນບ່ອນນັ້ນເອງ

ທ່ານພຣະມະຫາໂມກຄັນລານະໄດ້ເຫັນຍັກຕົນນັ້ນ ຕີຫົວທ່ານພຣະສາຣີບຸດ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຈຶ່ງເຂົ້າໄປຫາທ່ານພຣະສາຣີບຸດແລ້ວໄດ້ກ່າວກັບທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານສາຣີບຸດ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ບໍ່ມີທຸກອັນໃດບໍ

ທ່ານພຣະສາຣີບຸດຕອບວ່າ ທ່ານໂມກຄັນລານະ ຂ້ານ້ອຍສະບາຍດີ ພໍເປັນຢູ່ໄດ້ ພຽງແຕ່ເຈັບທີ່ຫົວຈັກໜ້ອຍ

ທ່ານພຣະມະຫາໂມກຄັນລານະກ່າວວ່າ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທ່ານສາຣີບຸດທ່ານມີລິດຫຼາຍ ມີອານຸພາບຫຼາຍຈິງ ຍັກຕົນໜຶ່ງໄດ້ຕີຫົວທ່ານໃນບ່ອນນີ້ ເປັນການຕີຢ່າງຮຸນແຮງ ການຕີແນວນີ້ສາມາດເຮັດໃຫ້ຊ້າງສູງ ໗-໘ ສອກຈົມດິນໄດ້ ຫຼືສາມາດທຳລາຍຍອດພູມະຫິມາໃຫ້ທະລາຍລົງໄດ້ ແຕ່ປານນັ້ນ ທ່ານກໍຍັງກ່າວແນວນີ້ວ່າ ທ່ານໂມກຄັນລານະ ຂ້ານ້ອຍສະບາຍດີ ພໍເປັນຢູ່ໄດ້ ພຽງແຕ່ເຈັບທີ່ຫົວຈັກໜ້ອຍ

ທ່ານພຣະສາຣີບຸດກ່າວວ່າ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທ່ານໂມກຄັນລານະ ທ່ານມີລິດຫຼາຍ ມີອານຸພາບຫຼາຍຈິງ ເຫັນແມ່ນກະທັ່ງຍັກ ສ່ວນຂ້ານ້ອຍຂະນະນີ້ ແມ່ນແຕ່ຜີສາດເປືອນຝຸ່ນຈັກຕົນກໍຍັງບໍ່ເຫັນ

ພຣະຜູ້ມີພຣະພາກເຈົ້າໄດ້ຊົງສະດັບສຽງສົນທະນາກ່ຽວກັບເລື້ອງນີ້ຂອງພຣະອັກຄະຣະສາວົກ ທັງ ໒ ອົງນັ້ນດ້ວຍພຣະໂສຕະທິບອັນບໍລິສຸດເໜືອມະນຸດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

## ພຸດທະອຸທານ

ຈິດຂອງໃຜຕັ້ງໝັ້ນ ບໍ່ຫວັ່ນໄຫວ ຄືພູ
ບໍ່ກຳໜັດໃນອາລົມອັນຊວນໃຫ້ກຳໜັດ
ບໍ່ຂັດເຄືອງໃນອາລົມອັນຊວນໃຫ້ຂັດເຄືອງ
ຜູ້ໃດ ອົບຮົມຈິດໄດ້ຢ່າງນີ້
ທຸກຈະມາເຖິງຜູ້ນັ້ນແຕ່ບ່ອນໃດ່

**ຍັກຂະປະຫາຣະສູດທີ ໔ ຈົບ**

## ໕. ນາຄະສູດ

## ວ່າດ້ວຍພະຍາຊ້າງປົນນິບັດພຣະພຸດທະເຈົ້າ

[໓໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໂຄສິຕາຣາມ ເຂດນະຄອນໂກສຳພີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຄຸກຄີກັບພວກພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ພວກເດຍຣະຖີ ສາວົກເດຍຣະຖີ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຄຸກຄີ ລຳບາກ ບໍ່ຜາສຸກ ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງດຳຣິແນວນີ້ວ່າ ເວລານີ້ເຮົາຢູ່ຄຸກຄີກັບພວກພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດ ຂອງພຣະຣາຊາ ພວກເດຍຣະຖີ ສາວົກເດຍຣະຖີ ເຮົາຢູ່ຄຸກຄີ ລຳບາກ ບໍ່ຜາສຸກ ທາງທີ່ດີ ເຮົາຄວນຫຼີກອອກຈາກໝູ່ຢູ່ຜູ້ດຽວ

ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນເມືອງໂກສຳພີ ສະເດັດກັບຈາກບິນທະບາດ ຫຼັງຈາກສະເຫວີຍພຣະກະຍາຫານສຳເລັດແລ້ວຊົງມ້ຽນເສນາສະນະ ຖືບາດແລະຈີວອນດ້ວຍພຣະອົງເອງ ບໍ່ຕັດບອກພຣະອຸປັດຖາກ ບໍ່ຕັດບອກພິກຂຸສົງ ພຣະອົງດຽວ ບໍ່ມີເພື່ອນ ສະເດັດຈາຣິກໄປທາງປ່າປາລິໄລຍະກະສະເດັດຈາຣິກໄປໂດຍລຳດັບຈົນເຖິງປ່າປາລິໄລຍະກະ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຄ່ວງໄມ້ຮັງ ໃນຣັກຂິຕະວັນ ເຂດປ່າປາລິໄລຍະກະນັ້ນ

ສະໄໝນັ້ນ ພະຍາຊ້າງໂຕໜຶ່ງຢູ່ຄຸກຄີກັບພວກຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ລູກຊ້າງນ້ອຍ ກິນຫຍ້າຍອດຫ້ຽນ ຖືກຊ້າງເຫຼົ່ານັ້ນກິນງ່າໄມ້ທີ່ຕົນຫັກລົງມາກອງໄວ້ ໄດ້ດື່ມ ແຕ່ນ້ຳຂຸ່ນ ໆ ເມື່ອພະຍາຊ້າງນັ້ນຍ່າງລົງຫຼືຂຶ້ນຈາກທ່ານ້ຳ ຊ້າງພັງກໍຍ່າງສຽດສີກາຍໄປ ພະຍາຊ້າງຢູ່ຄຸກຄີ ລຳບາກ ບໍ່ຜາສຸກ ພະຍາຊ້າງນັ້ນຈຶ່ງມີຄວາມຄິດດັ່ງນີ້ວ່າ ເວລານີ້ ເຮົາຢູ່ຄຸກຄີກັບພວກຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ລູກຊ້າງນ້ອຍ ກິນຫຍ້າຍອດຫ້ຽນ ຖືກຊ້າງເຫຼົ່ານັ້ນກິນງ່າໄມ້ທີ່ເຮົາຫັກລົງມາກອງໄວ້ ໄດ້ດື່ມແຕ່ນ້ຳຂຸ່ນ ໆ ເມື່ອເຮົາຍ່າງລົງຫຼືຂຶ້ນຈາກທ່ານ້ຳ ຊ້າງພັງກໍຍ່າງສຽດສີກາຍໄປ ເຮົາຢູ່ຄຸກຄີ ລຳບາກ ບໍ່ຜາສຸກ ທາງທີ່ດີ ເຮົາຄວນຫຼີກອອກຈາກຝູງໄປຢູ່ຜູ້ດຽວ

ເມື່ອແລ້ວ ພະຍາຊ້າງນັ້ນ ກໍໄດ້ຫຼີກອອກຈາກຝູງ ຍ່າງໄປທາງເຂດປ່າປາລິໄລຍະກະ ຣັກຂິຕະວັນ ຄ່ວງໄມ້ຮັງ ເຂົ້າໄປຫາພຣະຜູ້ມີພຣະພາກເຈົ້າ ໄດ້ຂ່າວວ່າ ພະຍາຊ້າງນັ້ນ ປັບພື້ນທີ່ທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃຫ້ປາສະຈາກຂອງຂຽວສົດ ແລະໃຊ້ງວງຕັກນ້ຳດື່ມນ້ຳໃຊ້ເຂົ້າໄປຕັ້ງໄວ້ເພື່ອພຣະຜູ້ມີພຣະພາກເຈົ້າ ຢູ່ບ່ອນນັ້ນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຫຼີບຫຼີກຢູ່ໃນບ່ອນສະງັດ ຊົງດຳຣິແບບນີ້ວ່າ ແຕ່ກ່ອນ ເຮົາຢູ່ຄຸກຄີກັບພວກພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ພວກເດຍຣະຖີ ສາວົກເດຍຣະຖີ ເຮົາຢູ່ຄຸກຄີ ລຳບາກ ບໍ່ຜາສຸກ ເວລານີ້ ເຮົານັ້ນບໍ່ຄຸກຄີຢູ່ກັບພວກພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ພວກເດຍຣະຖີ ສາວົກເດຍຣະຖີ ເຮົາບໍ່ຄຸກຄີ ຈຶ່ງຢູ່ຜາສຸກດີ

ພະຍາຊ້າງນັ້ນ ໄດ້ມີຄວາມຄິດແບບນີ້ວ່າ ແຕ່ກ່ອນ ເຮົາຢູ່ຄຸກຄີກັບພວກຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ລູກຊ້າງນ້ອຍ ກິນຫຍ້າຍອດຫ້ຽນ ສ່ວນງ່າໄມ້ທີ່ເຮົາຫັກລົງມາກອງໄວ້ ຊ້າງເຫຼົ່ານັ້ນກໍກິນໝົດ ໄດ້ດື່ມແຕ່ນ້ຳຂຸ່ນ ໆ ເມື່ອເຮົາຍ່າງລົງຫຼືຂຶ້ນຈາກທ່ານ້ຳ ຊ້າງພັງກໍຍ່າງສຽດສີກາຍໄປ ເຮົາຢູ່ຄຸກຄີ ລຳບາກ ບໍ່ຜາສຸກ ເວລານີ້ ເຮົານັ້ນບໍ່ຄຸກຄີຢູ່ກັບພວກຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ລູກຊ້າງນ້ອຍ ບໍ່ກິນຫຍ້າຍອດຫ້ຽນ ບໍ່ຖືກຊ້າງກິນງ່າໄມ້ທີ່ເຮົາຫັກລົງມາ ບໍ່ດື່ມແຕ່ນ້ຳຂຸ່ນ ໆ ເມື່ອເຮົາຍ່າງລົງຫຼືຂຶ້ນຈາກທ່ານ້ຳ ຊ້າງພັງບໍ່ຍ່າງສຽດສີກາຍໄປ ເຮົາບໍ່ຄຸກຄີ ຈຶ່ງຢູ່ຜາສຸກດີ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມສະຫງັດພຣະວໍຣະກາຍຂອງພຣະອົງ ແລະຊົງຮູ້ຄວາມຄິດຂອງພະຍາຊ້າງນັ້ນດ້ວຍພຣະຫະໄທແລ້ວ ຈຶ່ງຊົງເປັ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ**

ຈິດຂອງພະຍາຊ້າງຜູ້ມີງາງາມຄືງອນລົດນັ້ນ
ຍ່ອມສະເໝີກັບຈິດຂອງພຣະພຸດທະເຈົ້າ
ຍ້ອນຢູ່ຜູ້ດຽວຍິນດີໃນປ່າຄືກັນ[໑]

**ນາຄະສູດທີ ໘ ຈົບ**

# ໙. ປິນໂທລະສູດ

## ວ່າດ້ວຍພຣະປິນໂທລະພາຣະທະວາຊະເຖຣະ

[໓໙] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະປິນໂທລະພາຣະທະວາຊະຜູ້ຖືການ ຢູ່ປ່າເປັນຂໍ້ວັດປະຕິບັດ ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ຖືການນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ຖືການນຸ່ງຫົ່ມໄຕຣຈີວອນເປັນຂໍ້ວັດປະຕິບັດ ມີຄວາມປາຖະໜາໜ້ອຍ ສັນໂດດ

ມັກສະຫງັດ ບໍ່ຄຸກຄີ ດ້ວຍໝູ່ຄະນະ ພາຣົບຄວາມພຽນ ເປັນຜູ້ກຳຈັດກິເລດ ແລະກ່າວເຖິງແຕ່ເລື້ອງກຳຈັດກິເລດ ໝັ່ນປະກອບອະທິຈິດ ນັ່ງຄູ້ບັນລັງ ຕັ້ງກາຍກົງຢູ່ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະປິນໂທລະພາຣະທະວາຊະຜູ້ຖືການຢູ່ປ່າ ເປັນຂໍ້ວັດປະຕິບັດ ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ຖືການນຸ່ງຫົ່ມຜ້າບັງສຸກຸນເປັນ ຂໍ້ວັດປະຕິບັດ ຖືການນຸ່ງຫົ່ມຜ້າໄຕຣຈີວອນເປັນຂໍ້ວັດປະຕິບັດ ມີຄວາມປາຖະໜາໜ້ອຍ ສັນໂດດ ມັກສະງັດ ບໍ່ຄຸກຄີດ້ວຍໝູ່ຄະນະ ພາຣົບຄວາມພຽນ ເປັນຜູ້ກຳຈັດກິເລດ ແລະກ່າວເຖິງແຕ່ເລື້ອງກຳຈັດກິເລດ ໝັ່ນປະກອບອະທິຈິດ ນັ່ງຄູ້ບັນລັງ ຕັ້ງກາຍກົງຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ**

ການບໍ່ກ່າວຮ້າຍຜູ້ອື່ນ ການບໍ່ບຽດບຽນຜູ້ອື່ນ
ຄວາມສັງລວມໃນປາຕິໂມກ
ຄວາມເປັນຜູ້ຮູ້ຈັກປະມານໃນອາຫານ
ການຢູ່ໃນເສນາສະນະບ່ອນສະງັດ
ການປະກອບຄວາມພຽນໃນອະທິຈິດ
ນີ້ຄືຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ[១]

**ປິນໂທລະສູດທີ ໖ ຈົບ**

## ໗. ສາຣີປຸດຕະສູດ

## ວ່າດ້ວຍພຣະສາຣີບຸດເຖຣະ

[໓໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະສາຣີບຸດຜູ້ມີຄວາມປາຖະໜາໜ້ອຍ ສັນໂດດ ມັກສະງັດ ບໍ່ຄຸກຄີດ້ວຍໝູ່ຄະນະ ພາຣົບຄວາມພຽນ ໝັ່ນປະກອບອະທິຈິດ ນັ່ງຄູ້ບັນລັງ ຕັ້ງກາຍກົງ ຢູ່ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະສາຣີບຸດຜູ້ມີຄວາມປາຖະໜາໜ້ອຍ ສັນໂດດ ມັກສະງັດ ບໍ່ຄຸກຄີດ້ວຍໝູ່ຄະນະ ຜາຣົບຄວາມພຽນ ໝັ້ນປະກອບອະທິຈິດ ນັ່ງຄູ້ບັນລັງ ຕັ້ງກາຍກົງຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ

ຜູ້ມີຈິດໝັ້ນຄົງ[໑] ບໍ່ຜະໝາດ ເປັນມຸນີ[໒]
ສຶກສາທາງແຫ່ງຄວາມເປັນມຸນີ[໓]
ຜູ້ໝັ້ນຄົງ ສະງົບ ມີສະຕິທຸກຂະນະ
ຍ່ອມເປັນຜູ້ບໍ່ເສົ້າໂສກ[໔]

**ສາຣີປຸດຕະສູດທີ ๆ ຈົບ**

# ๘. ສຸນທະຣີສູດ

## ວ່າດ້ວຍນາງສຸນທະຣີປະຣິພາຊິກາ

[໓໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ຊົງໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ແມ່ນພິກຂຸສົງກໍເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ສ່ວນພວກອັນຍະເດຍຣະຖີ ປະຣິພາຊົກເປັນຜູ້ທີ່ມະຫາຊົນບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ບໍ່ນອບນ້ອມ ບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ

ຄັ້ງນັ້ນ ພວກອັນຍະເດຍຣະຖີປະຣິພາຊົກທົນເຫັນສັກກາຣະເກີດຂຶ້ນແກ່ພຣະຜູ້ມີພຣະພາກເຈົ້າແລະພິກຂຸສົງບໍ່ໄດ້ ຈຶ່ງພາກັນໄປຫານາງສຸນທະຣີປະຣິພາຊິກາຮອດບ່ອນຢູ່ ໄດ້ກ່າວກັບນາງສຸນທະຣີປະຣິພາຊິກາດັ່ງນີ້ວ່າ ນາງ ເຈົ້າສາມາດຈະເຮັດປະໂຫຍດແກ່ພວກຍາດໄດ້ບໍ ນາງຖາມວ່າ ທ່ານຜູ້ຈະເລີນ ຈະໃຫ້ຂ້ານ້ອຍເຮັດຫຍັງ ຂ້ານ້ອຍສາມາດເຮັດໄດ້ ເພື່ອປະໂຫຍດແກ່ພວກຍາດ ແມ່ນຊີວິດຂ້ານ້ອຍກໍສະລະໃຫ້ໄດ້

ພວກອັນຍະເດຍຣະຖີປະຣິພາຊົກຈຶ່ງກ່າວວ່າ ດີແລ້ວ ນາງ ຖ້າເປັນແນວນັ້ນ ເຈົ້າຈົ່ງໄປພຣະເຊຕະວັນເລື້ອຍ ໆ ນາງສຸນະທີປະຣິພາຊິກາຮັບຄຳຂອງອັນຍະເດຍຣະຖີປະຣິພາຊົກແລ້ວໄປພຣະເຊຕະວັນສະເລື້ອຍ ໆ

ເມື່ອພວກອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຮູ້ວ່າ ຄົນຈຳນວນຫຼາຍເຫັນນາງສຸນທະຣີປະຣິພາຊິກາໄປພຣະເຊຕະວັນເລື້ອຍ ໆ ຈຶ່ງໄດ້ຈ້າງນັກເລງໃຫ້ຂ້ານາງ ແລ້ວມົກໄວ້ໃນຄູຮອບພຣະເຊຕະວັນນັ້ນເອງ ຈາກນັ້ນໄດ້ພາກັນເຂົ້າໄປເຝົ້າພຣະເຈົ້າປະເສນທິໂກສົນຮອດບ່ອນຢູ່ ໄດ້ຂາບທູນພຣະເຈົ້າປະເສນທິໂກສົນດັ່ງນີ້ວ່າ ຂໍເດຊະ ມະຫາບໍພິດ ອາຕະມາພາບທັງຫຼາຍ ບໍ່ເຫັນນາງສຸນທະຣີປະຣິພາຊິກາເລີຍ

ພຣະເຈົ້າປະເສນທິໂກສົນຕັດຖາມວ່າ ພຣະຜູ້ເປັນເຈົ້າທັງຫຼາຍສົງໄສບ່ອນໃດນໍ?

ພວກອັນຍະເດຍຣະຖີປະຣິພາຊົກທູນຕອບວ່າ ທີ່ພຣະເຊຕະວັນ ມະຫາບໍພິດ

ພຣະເຈົ້າປະເສນທິໂກສົນຮັບສັ່ງວ່າ ຖ້າເປັນແນວນັ້ນ ພຣະຜູ້ເປັນເຈົ້າທັງຫຼາຍຈົ່ງຄົ້ນພຣະເຊຕະວັນ ເບິ່ງເທີ້ນ

ລຳດັບນັ້ນ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຈຶ່ງຄົ້ນພຣະເຊຕະວັນແລ້ວຂຸດສົບນາງສຸນທະຣີ ປະຣິພາຊິກາຕາມທີ່ຕົນສັ່ງໃຫ້ມົກໄວ້ຂຶ້ນຈາກຄູ ຍົກຂຶ້ນຕຽງແລ້ວໃຫ້ຫາມເຂົ້າໄປສູ່ນະຄອນສາວັດຖີ ຍ່າງຈາກຖະໜົນນີ້ໄປຖະໜົນນັ້ນ ຈາກຮ່ອມນີ້ໄປຮ່ອມນັ້ນ ພ້ອມກັບໃຫ້ ຄົນທັງຫຼາຍໂພນທະນາວ່າ

ທ່ານທັງຫຼາຍ ເຊີນເບິ່ງການກະທຳຂອງພວກພຣະສະມະນະເຊື້ອສາຍສາກະຍະບຸດເທີ້ນ ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ບໍ່ມີຢາງອາຍ ທຸສິນ ມີທຳຊົ່ວຊາມ ກ່າວຕົວະ ບໍ່ປະພຶດພົມມະຈັນ ຄວາມຈິງ ພຣະເຫຼົ່ານີ້ເຖິງຈະປະຕິຍານວ່າ ເປັນຜູ້ປະພຶດທຳ ປະພຶດສະງົບ ປະພຶດພົມມະຈັນ ກ່າວຄຳຈິງ ມີສິນ ມີກັນລະຍານະທຳ ແຕ່ພຣະເຫຼົ່ານີ້ບໍ່ມີຄວາມເປັນສະມະນະ ບໍ່ມີຄວາມເປັນພົມ[๑] ຄວາມເປັນສະມະນະຂອງພຣະເຫຼົ່ານີ້ເສື່ອມສິ້ນໄປແລ້ວ ຄວາມເປັນພົມຂອງພຣະເຫຼົ່ານີ້ເສື່ອມສິ້ນໄປແລ້ວ ຄວາມເປັນສະມະນະຂອງພຣະເຫຼົ່ານີ້ຈະມີແຕ່ບ່ອນໃດ ຄວາມເປັນພົມຂອງພຣະເຫຼົ່ານີ້ຈະມີແຕ່ບ່ອນໃດ ພຣະເຫຼົ່ານີ້ປາສະຈາກຄວາມເປັນສະມະນະ ພຣະເຫຼົ່ານີ້ປາສະຈາກຄວາມເປັນພົມແລ້ວ ເປັນຫຍັງ ເປັນຜູ້ຊາຍຈຶ່ງຂົ່ມຂືນແມ່ຍິງແລ້ວຂ້າແນວນີ້

ສະໄໝນັ້ນ ຄົນທັງຫຼາຍໃນນະຄອນສາວັດຖີເຫັນພິກຂຸທັງຫຼາຍແລ້ວດ່າ ກ່າວໂທດ ເວົ້າກະໂຊກໂຮກຮາກ ບຽດບຽນດ້ວຍວາຈາຫຍາບຄາຍທີ່ບໍ່ແມ່ນຂອງສັດຕະບຸຣຸດວ່າ ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ ບໍ່ມີຢາງອາຍ ທຸສິນ ມີທຳຊົ່ວຊາມ ກ່າວຕົວະ ບໍ່ປະພຶດພົມມະຈັນ

ຄວາມຈິງ ພຣະເຫຼົ່ານີ້ເຖິງຈະປະຕິຍານວ່າ ເປັນຜູ້ປະພຶດທຳ ປະພຶດສະງົບ ປະພຶດ ພົມມະຈັນ ກ່າວຄຳຈິງ ມີສິນ ມີກັນລະຍານະທຳ ແຕ່ພຣະເຫຼົ່ານີ້ກໍບໍ່ມີຄວາມເປັນສະມະນະ ບໍ່ມີຄວາມເປັນພົມ ຄວາມເປັນສະມະນະຂອງພຣະເຫຼົ່ານີ້ເສື່ອມສິ້ນໄປແລ້ວ ຄວາມເປັນພົມຂອງພຣະເຫຼົ່ານີ້ເສື່ອມສິ້ນໄປແລ້ວຄວາມເປັນສະມະນະຂອງພຣະເຫຼົ່ານີ້ຈະມີແຕ່ບ່ອນໃດ ຄວາມເປັນພົມຂອງພຣະເຫຼົ່ານີ້ຈະມີແຕ່ບ່ອນໃດ ພຣະເຫຼົ່ານີ້ປາສະຈາກຄວາມເປັນສະມະນະ ພຣະເຫຼົ່ານີ້ປາສະຈາກຄວາມເປັນພົມແລ້ວ ເປັນຫຍັງ ເປັນຜູ້ຊາຍຈຶ່ງຂົ່ມຂືນແມ່ຍິງແລ້ວຂ້າແນວນີ້

ຄັ້ງນັ້ນ ໃນເວລາເຊົ້າ ພິກຂຸຈຳນວນຫຼາຍຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປ ບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂະນະນີ້ ຄົນທັງຫຼາຍໃນນະຄອນສາວັດຖີເຫັນພິກຂຸທັງຫຼາຍແລ້ວດ່າ ກ່າວໂທດ ເວົ້າກະໂຊກໂຮກຮາກ ບຽດບຽນດ້ວຍວາຈາຫຍາບຄາຍ ທີ່ບໍ່ແມ່ນຂອງສັດຕະບຸຣຸດວ່າ ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ບໍ່ມີຢາງອາຍ ທຸສີນ ມີທຳຊົ່ວຊາມ ກ່າວຕົວະ ບໍ່ປະພຶດພົມມະຈັນ ຄວາມຈິງ ພຣະເຫຼົ່ານີ້ເຖິງຈະປະຕິຍານວ່າເປັນຜູ້ປະພຶດທຳ ປະພຶດສະງົບ ປະພຶດພົມມະຈັນ ກ່າວຄຳຈິງ ມີສິນ ມີກັນລະຍານະທຳ ແຕ່ພຣະເຫຼົ່ານີ້ກໍບໍ່ມີຄວາມເປັນສະມະນະ ບໍ່ມີຄວາມເປັນພົມ ຄວາມເປັນສະມະນະຂອງພຣະເຫຼົ່ານີ້ເສື່ອມສິ້ນໄປແລ້ວ ຄວາມເປັນພົມຂອງພຣະເຫຼົ່ານີ້ເສື່ອມ ສິ້ນໄປແລ້ວ ຄວາມເປັນສະມະນະຂອງພຣະເຫຼົ່ານີ້ຈະມີແຕ່ບ່ອນໃດ ຄວາມເປັນພົມຂອງພຣະເຫຼົ່ານີ້ຈະມີແຕ່ບ່ອນໃດ ພຣະເຫຼົ່ານີ້ປາສະຈາກຄວາມເປັນສະມະນະ ພຣະເຫຼົ່ານີ້ປາສະຈາກຄວາມເປັນພົມແລ້ວ ເປັນຫຍັງ ເປັນຜູ້ຊາຍຈຶ່ງຂົ່ມຂືນແມ່ຍິງແລ້ວຂ້າແນວນີ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສຽງ (ໂຈດ)ນັ້ນຈັກມີບໍ່ດົນ ຈັກມີພຽງ ໗ ມື້ເທົ່ານັ້ນ ເມື່ອພົ້ນ ໗ ມື້ ກໍຈັກຫາຍໄປ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງກ່າວຕອບກັບຄົນທັງຫຼາຍທີ່ເຫັນພິກຂຸແລ້ວດ່າ ກ່າວໂທດ ເວົ້າກະໂຊກໂຮກຮາກ ບຽດບຽນ ດ້ວຍວາຈາຫຍາບຄາຍທີ່ບໍ່ແມ່ນຂອງສັດຕະບຸຣຸດ ດ້ວຍຄາຖານີ້ວ່າ

ຄົນທີ່ມັກກ່າວຄຳບໍ່ຈິງ
ຫຼືຄົນທີ່ເຮັດຄວາມຊົ່ວແລ້ວກ່າວວ່າ
ເຮົາບໍ່ໄດ້ເຮັດ ຕ່າງກໍຕົກນະຮົກ
ຄົນ ໒ ຈຳພວກນັ້ນ ຕ່າງກໍມີກຳຊົ່ວ
ຕາຍໄປແລ້ວ ມີຄະຕິເທົ່າທຽມກັນໃນໂລກໜ້າ[๑]

ລຳດັບນັ້ນ ພິກຂຸທັງຫຼາຍຮຽນຄາຖານີ້ໃນສຳນັກພຣະຜູ້ມີພຣະພາກເຈົ້າແລ້ວກ່າວຕອບຄົນທັງຫຼາຍທີ່ເຫັນພິກຂຸແລ້ວດ່າ ກ່າວໂທດ ເວົ້າກະໂຊກໂຮກຮາກ ບຽດບຽນດ້ວຍວາຈາຫຍາບຄາຍ ທີ່ບໍ່ແມ່ນຂອງສັດຕະບຸຣຸດ ດ້ວຍຄາຖານີ້ວ່າ

ຄົນທີ່ມັກກ່າວຄຳບໍ່ຈິງ
ຫຼືຄົນທີ່ເຮັດຄວາມຊົ່ວແລ້ວກ່າວວ່າ
ເຮົາບໍ່ໄດ້ເຮັດ ຕ່າງກໍຕົກນະຮົກ
ຄົນ ໔ ຈຳພວກນັ້ນ ຕ່າງກໍມີກຳຊົ່ວ
ຕາຍໄປແລ້ວມີຄະຕິເທົ່າທຽມກັນໃນໂລກໜ້າ

ຄົນທັງຫຼາຍໄດ້ມີຄວາມຄິດແນວນີ້ວ່າ ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ ຄົງບໍ່ໄດ້ທຳຄວາມຜິດ ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ຄົງບໍ່ໄດ້ເຮັດບາບ ພຣະສະມະນະເຊື້ອສາຍ ສາກະຍະບຸດຈຶ່ງກ່າວສະບົດແນວນັ້ນ ສຽງ (ໂຈດ)ນັ້ນໄດ້ມີຢູ່ບໍ່ດົນ ສຽງ (ໂຈດ)ໄດ້ມີຢູ່ພຽງ ໆ ມື້ທີ່ນັ້ນ ເມື່ອພົ້ນ ໆ ມື້ກໍຫາຍໄປ

ຕໍ່ມາ ພິກຂຸຈຳນວນຫຼາຍພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າ ຕັດພຣະດຳຣັດນີ້ໄວ້ວ່າ ພິກຂຸທັງຫຼາຍ ສຽງ (ໂຈດ)ນັ້ນຈັກມີບໍ່ດົນ ຈັກມີພຽງ ໆ ມື້ທີ່ນັ້ນ ເມື່ອພົ້ນ ໆ ມື້ກໍຈັກຫາຍໄປ ສຽງ (ໂຈດ)ນັ້ນກໍຫາຍໄປ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ

ຄົນທັງຫຼາຍຜູ້ບໍ່ສັງລວມ ມັກກ່າວສຽບແທງຜູ້ອື່ນດ້ວຍວາຈາ
ຄືທະຫານຂ້າເສິກສຽບແທງຊ້າງທີ່ອອກເສິກດ້ວຍລູກສອນ ສັນນັ້ນ
ພິກຂຸຜູ້ມີຈິດບໍ່ຄິດປະທຸດສະຮ້າຍ ຟັງຄຳຫຍາບຄາຍ
ທີ່ຄົນພານກ່າວແລ້ວ ເພິ່ງອົດກັ້ນໄວ້ໄດ້

**ສຸນທະຣີສູດທີ ໗ ຈົບ**

# ໙. ອຸປະເສນະສູດ

## ວ່າດ້ວຍພຣະອຸປະເສນະວັງຄັນຕະບຸດ

[໓໙] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເວລຸວັນ ກະລັນທະກະນິວາປະສະຖານ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ທ່ານພຣະອຸປະເສນະວັງຄັນຕະບຸດ ຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງແບບນີ້ວ່າ ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ເຮົາມີພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າເປັນສາດສະດາ ເຮົາອອກຈາກເຮືອນບວດເປັນບັນພະຊິດ ໃນພຣະທຳວິໄນທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ເຮົາມີເພື່ອນພົມມະຈາຣີລ້ວນແຕ່ມີສິນ ມີກັນລະຍານະທຳ ເຮົາພໍ່າເພັງສິນໃຫ້ບໍລິບູນແລ້ວ ເຮົາມີຈິດຕັ້ງໝັ້ນດີແລ້ວ ມີອາລົມເປັນໜຶ່ງ ເປັນພຣະອະຣະຫັນຕະຂີນາສົບ ເປັນຜູ້ມີລິດຫຼາຍ ມີອານຸພາບຫຼາຍ ຊີວິດຂອງເຮົາ ຊື່ວ່າມີຄວາມຈະເລີນ ຄວາມຕາຍຂອງເຮົາກໍຊື່ວ່າເປັນຄວາມຕາຍດີ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງຮູ້ຄວາມຄິດຄຳນຶງຂອງທ່ານພຣະອຸປະເສນະວັງຄັນຕະບຸດດ້ວຍພຣະຫະໄທແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ**

ບຸກຄົນຜູ້ທີ່ດຳລົງຊີວິດຢູ່ໂດຍບໍ່ເດືອດຮ້ອນ
ໃນເວລາຈວນຈະຕາຍກໍບໍ່ເສົ້າໂສກ
ຊື່ວ່າພົບນິບພານແລ້ວ ເປັນປາດ
ແມ່ນຈະຢູ່ທ່າມກາງຄົນທີ່ເສົ້າໂສກ ກໍບໍ່ເສົ້າໂສກ
ພິກຂຸຜູ້ຕັດພະວະຕັນຫາ[໑]ໄດ້ເດັດຂາດ
ມີຈິດສະງົບ ມີຊາດສົງສານ[໒]ໝົດແລ້ວ
ທ່ານຍ່ອມບໍ່ມີພົບໃໝ່

**ອຸປະເສນະສູດທີ ໙ ຈົບ**

# ໑໐. ສາຣີປຸດຕະອຸປະສະມະສູດ

## ວ່າດ້ວຍການລະງັບກິເລດຂອງພຣະສາຣີບຸດເຖຣະ

[໔໐] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະສາຣີບຸດນັ່ງຄູ້ບັນລັງ ຕັ້ງກາຍກົງພິຈາລະນາເຖິງການລະງັບກິເລດລົງໄດ້ໝົດສິ້ນຂອງຕົນ ຢູ່ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະສາຣີບຸດຜູ້ກຳລັງນັ່ງຄູ້ບັນລັງ ຕັ້ງກາຍກົງ ພິຈາລະນາເຖິງການລະງັບກິເລດໄດ້ໝົດສິ້ນຂອງຕົນຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ

ພິກຂຸຜູ້ມີຈິດສະງົບແລະລະງັບກິເລດໄດ້
ຕັດຕັນຫາທີ່ນຳໄປສູ່ພົບໄດ້
ມີຊາດສົງສານໝົດແລ້ວ
ຊື່ວ່າເປັນຜູ້ພົ້ນແລ້ວຈາກເຄື່ອງຜູກມັດແຫ່ງມານ

**ສາຣີປຸດຕະອຸປະສະມະສູດທີ ໑໐ ຈົບ**

**ເມຄິຍະວັກທີ ៤ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ເມຄິຍະສູດ
໒. ໂຄປາລະກະສູດ
໓. ນາຄະສູດ
໗. ສາຣີປຸດຕະສູດ
໙. ອຸປະເສນະສູດ
໘. ອຸດທະຕະສູດ
໔. ຍັກຂະປະຫາຣະສູດ
໖. ປິນໂທລະສູດ
໘. ສຸນທະຣີສູດ
໑໐. ສາຣີປຸດຕະອຸປະສະມະສູດ

# ໔. ໂສນະເຖຣະວັກ

## ໝວດວ່າດ້ວຍພຣະໂສນະເຖຣະ

## ໑. ປິຍະຕະຣະສູດ[1]

### ວ່າດ້ວຍການບໍ່ມີຜູ້ອື່ນເປັນທີ່ຮັກຍິ່ງກວ່າຕົນ

[໔໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະເຈົ້າປະເສນທິໂກສົນກັບພຣະນາງມັນລິກາເທວີ ປະທັບຢູ່ທີ່ຜາສາດອັນປະເສີດຊັ້ນເທິງ ຂະນະນັ້ນ ພຣະເຈົ້າປະເສນທິໂກສົນຕັດກັບພຣະນາງ ມັນລິກາເທວີດັ່ງນີ້ວ່າ ມັນລິກາ ໃຜອື່ນເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງນາງມີແດ່ບໍ

ພຣະນາງມັນລິກາເທວີໄດ້ທູນສະໜອງວ່າ ຂໍເດຊະ ໃຜອື່ນ ເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງຂ້ານ້ອຍບໍ່ມີເລີຍ ແລະໃຜອື່ນເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງພຣະອົງມີຢູ່ບໍ?

ພຣະເຈົ້າປະເສນທິໂກສົນຕັດວ່າ ມັນລິກາ ໃຜອື່ນເຊິ່ງເປັນທີ່ຮັກຍິ່ງກວ່າຕົນເອງຂອງເຮົາບໍ່ມີເລີຍ

ຕໍ່ມາ ພຣະເຈົ້າປະເສນທິໂກສົນສະເດັດລົງຈາກຜາສາດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ພຣະອົງຜູ້ຈະເລີນ ມື້ນີ້ ຂ້າພຣະອົງກັບພຣະນາງມັນລິກາເທວີຢູ່ທີ່ຜາສາດອັນປະເສີດຊັ້ນເທິງ ໄດ້ເວົ້າກັບພຣະນາງມັນລິກາເທວີດັ່ງນີ້ວ່າ ມັນລິກາ ໃຜອື່ນເຊິ່ງເປັນ ທີ່ຮັກຍິ່ງກວ່າຕົນຂອງນາງມີແດ່ບໍ ເມື່ອຂ້າພຣະອົງຖາມແລ້ວແນວນີ້ ພຣະນາງມັນລິກາເທວີໄດ້ຕອບຂ້າພຣະອົງດັ່ງນີ້ວ່າ ຂໍເດຊະ ໃຜອື່ນເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງຂ້ານ້ອຍບໍ່ມີ ແລະໃຜອື່ນເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງພຣະອົງມີຢູ່ບໍ ຂ້າແດ່ພຣະອົງຜູ້ຈະເລີນ ເມື່ອພຣະນາງມັນລິກາເທວີກ່າວແນວນີ້ຂ້າພຣະອົງໄດ້ເວົ້າກັບ ພຣະນາງມັນລິກາເທວີ ດັ່ງນີ້ວ່າ ມັນລິກາ ໃຜອື່ນເຊິ່ງເປັນທີ່ຮັກຍິ່ງກວ່າຕົນຂອງເຮົາບໍ່ມີເລີຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນ ວ່າ

### ພຸດທະອຸທານ

ບຸກຄົນຕັ້ງໃຈຄົ້ນຫາທົ່ວທຸກທິດ
ກໍບໍ່ພົບໃຜເຊິ່ງເປັນທີ່ຮັກຍິ່ງວ່າຕົນໃນບ່ອນໃດ ໆ ເລີຍ
ສັດທັງຫຼາຍເຫຼົ່າອື່ນກໍຮັກຕົນຫຼາຍເຊັ່ນນັ້ນຄືກັນ
ຍ້ອນແນວນັ້ນ ຜູ້ຮັກຕົນຈຶ່ງບໍ່ຄວນບຽດບຽນຜູ້ອື່ນ

**ປິຍະຕະຣະສູດທີ ໑ ຈົບ**

## ໘. ອັບປາຍຸກະສູດ

### ວ່າດ້ວຍພຣະມານດາພຣະໂພທິສັດມີອາຍຸໜ້ອຍ

[໔໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ເປັນເວລາຄ່ຳ ທ່ານພຣະອານົນອອກຈາກບ່ອນ ຫຼີບຫຼີກແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະມານດາຂອງພຣະຜູ້ມີພຣະພາກເຈົ້າມີພຣະຊົນມາຍຸໜ້ອຍ ເມື່ອພຣະຜູ້ມີພຣະພາກເຈົ້າ ປະສູດໄດ້ ໗ ມື້ ພຣະມານດາຂອງພຣະຜູ້ມີພຣະພາກເຈົ້າກໍສະເດັດສະຫວັນຄົດໄປເກີດໃນໝູ່ເທບຊັ້ນດຸສິດ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຈິງແນວນັ້ນ ອານົນ ຈິງແນວນັ້ນ ອານົນ ມານດາພຣະໂພທິສັດມີອາຍຸໜ້ອຍ ເມື່ອພຣະໂພທິສັດປະສູດໄດ້ ໗ ມື້ ມານດາກໍສະຫວັນຄົດໄປເກີດໃນໝູ່ເທບຊັ້ນດຸສິດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ

ສັດເຫຼົ່າໃດເຫຼົ່າໜຶ່ງ ບໍ່ວ່າຈະເປັນຜູ້ທີ່ເກີດແລ້ວ
ຈະເກີດຕໍ່ໄປ ຫຼືກຳລັງເກີດກໍຕາມ
ສັດເຫຼົ່ານັ້ນທັງໝົດຈັກຕ້ອງລະຖິ້ມຮ່າງກາຍໄປ

ຄົນສະຫຼາດຮູ້ຄວາມເສື່ອມໄປຂອງສັດທັງໝົດນັ້ນແລ້ວ
ຄວນເປັນຜູ້ປະກອບຄວາມພຽນ[1] ປະພຶດພົມມະຈັນ[2]

**ອັບປາຍຸກະສູດທີ ໘ ຈົບ**

## ໓. ສຸບປະພຸດທະກຸດຖິສູດ

## ວ່າດ້ວຍຊາຍໂຣກເຮື້ອນຊື່ສຸບປະພຸດທະ

[໔໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເວລຸວັນ ກະລັນທະກະນິວາປະສະຖານ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ຊາຍຄົນໜຶ່ງຊື່ສຸບປະພຸດທະ ເປັນເຮື້ອນ ທຸກຍາກກຳພ້າ ຍາກໄຮ້ ມື້ໜຶ່ງ ພຣະຜູ້ມີພຣະພາກເຈົ້າມີບໍລິສັດໝູ່ໃຫຍ່ຮ້ອມລ້ອມປະທັບນັ່ງສະແດງທຳຢູ່ ຊາຍໂຣກເຮື້ອນຊື່ສຸບປະພຸດທະໄດ້ເຫັນໝູ່ມະຫາຊົນນັ້ນນັ່ງປະຊຸມກັນແຕ່ທີ່ໄກ ໄດ້ມີຄວາມຄິດດັ່ງນີ້ວ່າ ຊົນທັງຫຼາຍກຳລັງແຈກຂອງຫຍ້ຳຫຼືຂອງບໍຣິໂພກ ໃນບ່ອນນີ້ເປັນແນ່ ທາງທີ່ດີເຮົາຄວນເຂົ້າໄປສູ່ໝູ່ມະຫາຊົນນັ້ນ ເພິ່ງໄດ້ຂອງຫຍ້ຳຫຼືຂອງບໍຣິໂພກໃນບ່ອນນີ້ແດ່

ລຳດັບນັ້ນ ຊາຍໂຣກເຮື້ອນຊື່ສຸບປະພຸດທະໄດ້ເຂົ້າໄປສູ່ໝູ່ມະຫາຊົນນັ້ນ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າມີບໍລິສັດໝູ່ໃຫຍ່ຮ້ອມລ້ອມປະທັບນັ່ງສະແດງທຳຢູ່ ຈຶ່ງມີຄວາມຄິດດັ່ງນີ້ວ່າ ຊົນທັງຫຼາຍຄົງບໍ່ແຈກຂອງຫຍ້ຳຫຼືຂອງບໍຣິໂພກໃນບ່ອນນີ້ ພຣະສະມະນະໂຄດົມນີ້ສະແດງທຳໃນບໍລິສັດ ທາງທີ່ດີເຮົາຄວນຟັງທຳແດ່ ຈຶ່ງນັ່ງລົງ ບ່ອນທີ່ສົມຄວນໃນບ່ອນນັ້ນ ດ້ວຍຕັ້ງໃຈວ່າ ເຮົາຈັກຟັງທຳ

ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າຊົງມະນະສິການກຳນົດຈິດຂອງບໍລິສັດທຸກໝູ່ເຫຼົ່າດ້ວຍພຣະຫະໄທວ່າ ໃນບໍລິສັດນີ້ ໃຜນໍແລຄວນຮູ້ແຈ້ງທຳ ພຣະຜູ້ມີພຣະພາກເຈົ້າທອດພຣະເນດເຫັນຊາຍໂຣກເຮື້ອນຊື່ສຸບປະພຸດທະນັ່ງຢູ່ໃນບໍລິສັດນັ້ນ ຈຶ່ງຊົງພຣະດຳຣິດັ່ງນີ້ວ່າ ໃນບໍລິສັດນີ້ ຊາຍຄົນນີ້ແລຄວນຮູ້ແຈ້ງທຳ ພຣະອົງຊົງຜາຣົບຊາຍໂຣກເຮື້ອນຊື່ສຸບປະພຸດທະ ຈຶ່ງຕັດອະນຸບຸບພິກະຖາ ຄື ຊົງປະກາດ

໑. ທານະກະຖາ (ເລື້ອງທານ)
໒. ສີລະກະຖາ (ເລື້ອງສີນ)
໓. ສັກຄະກະຖາ (ເລື້ອງສະຫວັນ)
໔. ກາມາທີນະວະກະຖາ (ເລື້ອງໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງກາມ)[1]
໕. ເນກຂຳມານິສັງສະກະຖາ (ເລື້ອງອານິສົງແຫ່ງການອອກຈາກກາມ)

ເມື່ອຊົງຮູ້ວ່າຊາຍໂຣກເຮື້ອນຊື່ສຸບປະພຸດທະມີຈິດຄວນບັນລຸທຳ ສະງົບ ອ່ອນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະເທດສະໜາ໌ຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳຈັກຂຸອັນປອດທຸລີ ປາສະຈາກມົນທິນ ໄດ້ເກີດແກ່ຊາຍໂຣກເຮື້ອນຊື່ສຸບປະພຸດທະ ໃນບ່ອນນັ່ງນັ້ນ ໆ ເອງວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງລ້ວນມີຄວາມດັບໄປເປັນທຳມະດາ ປຽບຄື ຜ້າຂາວສະອາດປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

ຄັ້ງນັ້ນແລ ຊາຍໂຣກເຮື້ອນຊື່ສຸບປະພຸດທະໄດ້ເຫັນທຳ ບັນລຸທຳ ຮູ້ທຳ ຢັ່ງລົງສູ່ທຳຂ້າມພົ້ນຄວາມສົງໄສ໌ ປາສະຈາກຄວາມເຄືອບແຄງ ເຖິງຄວາມແກ່ກ້າ ປາສະຈາກຄວາມມີຜູ້ອື່ນເປັນປັດໄຈ໌ໃນສາດສະໜາຂອງພຣະສາດສະດາລຸກຈາກບ່ອນນັ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດ ໂດຍຕັ້ງໃຈວ່າ ຄົນມີຕາດີ ຈັກເຫັນຮູບໄດ້ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຈົນຕະຫຼອດຊີວິດ

ເມື່ອຊາຍໂຣກເຮື້ອນຊື່ສຸບປະພຸດທະໄດ້ຟັງພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວກໍຊື່ນຊົມຍິນດີພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດແລ້ວຈຶ່ງລຸກຈາກບ່ອນນັ່ງ ຖວາຍອະພິວາດແລ້ວລຸກຂຶ້ນກະທຳປະທັກຂິນຈາກໄປ ທັນໃດນັ້ນເອງ ງົວແມ່ລູກອ່ອນໄດ້ຊົນຊາຍໂຣກເຮື້ອນຊື່ສຸບປະພຸດທະຜູ້ຈາກໄປບໍ່ດົນຈົນລົ້ມລົງເສຍຊີວິດ

ລຳດັບນັ້ນ ພິກຂຸຈຳນວນຫຼາຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຊາຍໂຣກເຮື້ອນຊື່ສຸບປະພຸດທະຜູ້ໄດ້ຟັງພຣະດຳຣັດທີ່ພຣະອົງຊົງຊີ້ແຈ່ງໃຫ້ເຫັນແຈ້ງນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ເຂົາເສຍຊີວິດແລ້ວ ຄະຕິຂອງເຂົາເປັນແນວໃດ ສຳປະຣາຍະພົບຂອງເຂົາເປັນແນວໃດ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຊາຍໂຣກເຮື້ອນຊື່ສຸບປະພຸດທະເປັນບັນດິດ ປະຕິບັດທຳສົມຄວນແກ່ທຳ ແລະບໍ່ບຽດບຽນເຮົາໃຫ້ລຳບາກ ຍ້ອນທຳ ເປັນເຫດ ຊາຍໂຣກເຮື້ອນຊື່ສຸບປະພຸດທະ ເປັນໂສດາບັນ ຍ້ອນສັງໂຍດ ໓ ປະການສິ້ນໄປ ບໍ່ມີທາງຕົກຕໍ່າ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໍໃນມື້ທາງໜ້າ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບວນີ້ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍແລເປັນເຫດ ອັນໃດເປັນປັດໄຈທີ່ເຮັດໃຫ້ຊາຍຊື່ສຸບປະພຸດທະ ເປັນຂີ້ເຮື້ອນ ທຸກຍາກ ກຳພ້າ ຍາກໄຮ້ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຊາດກ່ອນ ຊາຍໂຣກເຮື້ອນຊື່ສຸບປະພຸດທະເປັນບຸດເສດຖີໃນນະຄອນຣາດຊະຄຶນີ້ເອງ ເຂົາອອກໄປສູ່ສວນສາທາລະນະ ໄດ້ເຫັນພຣະປັດເຈກພຸດທະນາມວ່າຕະຄະຣະສິຂີ ກຳລັງຍ່າງບິນທະບາດໃນພຣະນະຄອນ ເຂົາເມື່ອເຫັນແລ້ວ ຈຶ່ງໄດ້ມີຄວາມຄິດແບວນີ້ວ່າ ໃຜນີ້ ເປັນຂີ້ເຮື້ອນຫົ່ມຜ້າສົກກະປົກທ່ຽວໄປ ແລ້ວຖົ່ມນໍ້າລາຍຍ່າງແຊງໄປທາງດ້ານຊ້າຍ ຍ້ອນຜົນແຫ່ງກຳນັ້ນ ເຂົາໄໝ້ຢູ່ໃນນະຣົກຫຼາຍ ໑໐໐ ຫຼາຍ ໑,໐໐໐ ຫຼາຍ ໑໐໐,໐໐໐ ປີ ຍ້ອນເສດແຫ່ງວິບາກກຳນັ້ນຍັງເຫຼືອຢູ່ ເຂົາຈຶ່ງເກີດເປັນຊາຍໂຣກເຮື້ອນ ທຸກຍາກ ກຳພ້າ ຍາກໄຮ້ໃນນະຄອນຣາດຊະຄຶນີ້ເອງ ເຂົາອາໄສທຳວິໄນທີ່ຕະຖາຄົດປະກາດໄວ້ແລ້ວ ຍຶດໝັ້ນ ສັດທາ ສິນ ສຸຕະ ຈາຄະ ປັນຍາ ເຂົາເມື່ອໄດ້ອາໄສທຳວິໄນທີ່ຕະຖາຄົດປະກາດໄວ້ແລ້ວຍຶດໝັ້ນສັດທາ ສິນ ສຸຕະ ຈາຄະ ປັນຍາ ຫຼັງຈາກຕາຍແລ້ວ ເຂົາຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ ເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາຊັ້ນຕາວະຕິງສາ ແລະຮຸ່ງເຮືອງເໜືອກວ່າເທວະດາເຫຼົ່າອື່ນ ໃນຊັ້ນຕາວະຕິງສານັ້ນ ດ້ວຍວັນນະແລະຍົດ໌

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ

ບັນດິດໃນໂລກນີ້ ເມື່ອຍັງມີຄວາມບາກບັ່ນຢູ່
ຄວນລະເວັ້ນບາບທຸກຢ່າງ
ຄືຄົນຕາດີແລ້ວເວັ້ນທາງຊຸຂະ ສັນນັ້ນ

**ສຸບປະພຸດທະກຸດຖີສູດທີ ໓ ຈົບ**

# ໔. ກຸມາຣະກະສູດ

## ວ່າດ້ວຍເດັກຫາປາ

[໔໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ເດັກຈຳນວນຫຼາຍຫາປາຢູ່ໃນລະຫວ່າງນະຄອນສາວັດຖີກັບພຣະເຊຕະວັນ

ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດແລະຈີວອນສະເດັດເຂົ້າໄປບິນທະບາດໃນເມືອງສາວັດຖີ ໄດ້ທອດພຣະເນດເຫັນເດັກຈຳນວນຫຼາຍຫາປາຢູ່ໃນລະຫວ່າງນະຄອນສາວັດຖີກັບພຣະເຊຕະວັນນັ້ນ ຈຶ່ງສະເດັດເຂົ້າໄປຫາເດັກເຫຼົ່ານັ້ນແລ້ວໄດ້ຕັດຖາມດັ່ງນີ້ວ່າ ເດັກນ້ອຍທັງຫຼາຍ ພວກເຈົ້າຢ້ານຄວາມທຸກ ຄວາມທຸກບໍ່ເປັນທີ່ຮັກ ຂອງພວກເຈົ້າບໍ່ແມ່ນບໍ

ເດັກນ້ອຍທັງຫຼາຍທູນຕອບວ່າ ເປັນແນວນັ້ນ ຂ້ານ້ອຍ ຂ້າພຣະອົງທັງຫຼາຍຢ້ານຄວາມທຸກ ຄວາມທຸກບໍ່ເປັນທີ່ຮັກຂອງຂ້າພຣະອົງທັງຫຼາຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ

ຖ້າພວກເຈົ້າຢ້ານຄວາມທຸກ
ຖ້າຄວາມທຸກບໍ່ເປັນທີ່ຮັກຂອງພວກເຈົ້າ
ກໍຢ່າໄດ້ເຮັດບາບກຳໃນທາງແຈ້ງ[໑]ຫຼືບາບກຳໃນບ່ອນລັບ[໒]
ຍ້ອນວ່າຖ້າພວກເຈົ້າຈັກເຮັດ ຫຼືກຳລັງເຮັດບາບກຳຢູ່
ເຖິງຈະເຫາະໜີໄປ ພວກເຈົ້າຍ່ອມບໍ່ພົ້ນຈາກຄວາມທຸກໄປໄດ້

**ກຸມາຣະກະສູດທີ ໔ ຈົບ**

# ໕. ອຸໂປສະຖະສູດ[໓]

## ວ່າດ້ວຍອຸໂປສົດກຳ

[໔໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ບຸບພາຣາມ ຜາສາດຂອງນາງວິສາຂາມິຄາຣະມາຕາ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າມີພິກຂຸສົງຮ້ອມລ້ອມປະທັບນັ່ງໃນມື້ອຸໂປສົດມື້ໜຶ່ງ

ຄັ້ງນັ້ນ ເມື່ອຣາຕີຜ່ານໄປແລ້ວ[6] ປະຖົມມະຍາມຜ່ານໄປແລ້ວ ທ່ານພຣະອານົນລຸກຈາກອາສະນະຫົ່ມອຸດຕະຣາສົງບ່ຽງບ່າ ປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າ ໄດ້ຂາບທູນ ດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຣາຕີຜ່ານໄປແລ້ວ ປະຖົມມະຍາມຜ່ານໄປແລ້ວ ພິກຂຸສົງ ນັ່ງຖ້າຢູ່ດົນແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງໂຜດຍົກພຣະປາຕິໂມກຂຶ້ນສະແດງແກ່ພິກຂຸທັງຫຼາຍເທີ້ນ ຂ້ານ້ອຍ

ເມື່ອທ່ານພຣະອານົນຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຊົງມິດ[7]

ແມ່ນເທື່ອທີ ໔ ເມື່ອຣາຕີຜ່ານໄປແລ້ວ ມັດຊິມະຍາມຜ່ານໄປແລ້ວ ທ່ານພຣະອານົນລຸກຈາກອາສະນະຫົ່ມອຸດຕະຣາສົງບ່ຽງບ່າ ປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າ ໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຣາຕີຜ່ານໄປແລ້ວ ມັດຊິມະຍາມຜ່ານໄປແລ້ວ ພິກຂຸສົງນັ່ງຖ້າຢູ່ດົນແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງໂຜດຍົກພຣະປາຕິໂມກຂຶ້ນສະແດງແກ່ພິກຂຸທັງຫຼາຍເທີ້ນ ຂ້ານ້ອຍ

ແມ່ນເທື່ອທີ ໔ ພຣະຜູ້ມີພຣະພາກເຈົ້າກໍຊົງມິດ

ແມ່ນເທື່ອ ໓ ເມື່ອຣາຕີຜ່ານໄປແລ້ວ ປັດສິມມະຍາມຜ່ານໄປແລ້ວ ຍາມອາລຸນເລີ່ມສະຫວ່າງ ທ່ານພຣະອານົນລຸກຈາກອາສະນະຫົ່ມອຸດຕະຣາສົງບ່ຽງບ່າ ປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຣາຕີຜ່ານໄປແລ້ວ ປັດສິມມະຍາມຜ່ານໄປແລ້ວ ຍາມອາລຸນເລີ່ມສະຫວ່າງ ພິກຂຸສົງນັ່ງຖ້າຢູ່ດົນແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງໂຜດຍົກພຣະປາຕິໂມກຂຶ້ນສະແດງແກ່ພິກຂຸທັງຫຼາຍເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ບໍລິສັດບໍ່ບໍລິສຸດ

ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ມີຄວາມຄິດດັ່ງນີ້ວ່າ ພຣະຜູ້ມີພຣະພາກເຈົ້າຕັດແນວນີ້ວ່າ ບໍລິສັດບໍ່ບໍລິສຸດ ຊົງໝາຍເຖິງໃຜກັນ ຈຶ່ງກຳນົດຈິດຂອງພິກຂຸສົງດ້ວຍຈິດ (ຂອງຕົນ) ໄດ້ເຫັນບຸກຄົນຜູ້ທຸສິນ ມີທຳຊົ່ວຊາມ ບໍ່ສະອາດ ມີຄວາມປະພຶດທີ່ໜ້າລັງກຽດ ມີວຽກງານປົກປິດ ບໍ່ແມ່ນສະມະນະ ແຕ່ປະຕິຍານວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີ ແຕ່ປະຕິຍານວ່າເປັນພົມມະຈາຣີ ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນຄືຂີ້ເຫຍື່ອ ນັ່ງຢູ່ໃນທ່າມກາງພິກຂຸ

ສິ່ງນັ້ນ ເມື່ອເຫັນແລ້ວຈຶ່ງລຸກຈາກອາສະນະເຂົ້າໄປຫາບຸກຄົນນັ້ນແລ້ວ ກ່າວວ່າ ທ່ານຈົ່ງລຸກຂຶ້ນ ພຣະຜູ້ມີພຣະພາກເຈົ້າຊົງເຫັນທ່ານແລ້ວ ທ່ານບໍ່ມີສັງວາດກັບພິກຂຸທັງຫຼາຍ

ເມື່ອທ່ານພຣະມະຫາໂມກຄັນລານະກ່າວແບບນີ້ແລ້ວ ບຸກຄົນນັ້ນ ກໍຍັງມິດຢູ່

ແມ່ນເທື່ອທີ ໔ ທ່ານພຣະມະຫາໂມກຄັນລານະກໍໄດ້ກ່າວກັບບຸກຄົນນັ້ນວ່າ ທ່ານຈົ່ງລຸກຂຶ້ນ ພຣະຜູ້ມີພຣະພາກເຈົ້າຊົງເຫັນທ່ານແລ້ວ ທ່ານບໍ່ມີສັງວາດກັບພິກຂຸທັງຫຼາຍ

ແມ່ນເທື່ອທີ ໔ ບຸກຄົນນັ້ນ ກໍຍັງມິດຢູ່

ແມ່ນເທື່ອທີ ໕ ທ່ານພຣະມະຫາໂມກຄັນລານະກໍໄດ້ກ່າວກັບບຸກຄົນນັ້ນວ່າ ທ່ານຈົ່ງລຸກຂຶ້ນ ພຣະຜູ້ມີພຣະພາກເຈົ້າຊົງເຫັນທ່ານແລ້ວ ທ່ານບໍ່ມີສັງວາດກັບພິກຂຸທັງຫຼາຍ

ແມ່ນເທື່ອທີ ໕ ບຸກຄົນນັ້ນ ກໍຍັງມິດຢູ່

ເມື່ອແລ້ວ ທ່ານພຣະມະຫາໂມກຄັນລານະຈຶ່ງຈັບແຂນເຂົາດຶງໃຫ້ອອກໄປນອກຊຸ້ມປະຕູ ໃສ່ກອນແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງໃຫ້ບຸກຄົນນັ້ນອອກໄປພົ້ນແລ້ວ ບໍລິສັດບໍລິສຸດແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງໂຜດຍົກພຣະປາຕິໂມກຂຶ້ນສະແດງແກ່ພິກຂຸທັງຫຼາຍເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ໂມກຄັນລານະ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ໂມຄະບຸຣຸດນີ້ດື້ຢູ່ ຈົນຕ້ອງດຶງແຂນໄລ່ອອກໄປ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ຕັ້ງແຕ່ບັດນີ້ໄປ ເຮົາຈັກບໍ່ເຮັດອຸໂປສົດ ຈັກບໍ່ຍົກປາຕິໂມກຂຶ້ນສະແດງ ຕັ້ງແຕ່ບັດນີ້ໄປ ທ່ານທັງຫຼາຍນັ້ນແລເພິ່ງເຮັດອຸໂປສົດ ຍົກປາຕິໂມກຂຶ້ນສະແດງເທີ້ນ ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ທີ່ຕະຖາຄົດຈະເຮັດອຸໂປສົດ ຈະຍົກປາຕິໂມກຂຶ້ນສະແດງໃນເມື່ອບໍລິສັດບໍ່ບໍລິສຸດ[9]

ພິກຂຸທັງຫຼາຍ ໃນມະຫາສະມຸດມີສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

ສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການ ຄື

໑. ມະຫາສະມຸດຕ່ຳໄປໂດຍລຳດັບ ລາດໄປໂດຍລຳດັບ ເລິກລົງໄປໂດຍລຳດັບ ບໍ່ເລິກຊັນດິ່ງໄປທັນທີ ພິກຂຸທັງຫຼາຍ ການທີ່ມະຫາສະມຸດຕ່ຳໄປໂດຍລຳດັບ

ລາດໄປໂດຍລຳດັບ ເລິກລົງໄປໂດຍລຳດັບ ບໍ່ເລິກຊັນດິ່ງໄປທັນທີ ນີ້ເປັນສິ່ງ ທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໑ ໃນມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໒. ມະຫາສະມຸດມີປົກກະຕິຄືເກົ່າ ບໍ່ລົ້ນຝັ່ງ ພິກຂຸທັງຫຼາຍ ການທີ່ມະຫາສະມຸດມີ ປົກກະຕິຄືເກົ່າ ບໍ່ລົ້ນຝັ່ງ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໒ ໃນມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໓. ມະຫາສະມຸດບໍ່ຢູ່ຮ່ວມກັບຊາກສົບ ຍ່ອມຊັດຊາກສົບຂຶ້ນຝັ່ງຈົນເຖິງເທິງບົກທັນທີ ພິກຂຸທັງຫຼາຍ ທີ່ມະຫາສະມຸດບໍ່ຢູ່ຮ່ວມກັບຊາກສົບ ຍ່ອມຊັດຊາກສົບຂຶ້ນຝັ່ງຈົນເຖິງເທິງບົກທັນທີ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໓ ໃນມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີ ໃນມະຫາສະມຸດ

໔. ມະຫານະທີທຸກສາຍ ຄື ຄົງຄາ ຍະມຸນາ ອະຈິຣະວະດີ ສະຣະພູ ມະຮີ ໄຫຼລົງສູ່ມະຫາສະມຸດແລ້ວ ຍ່ອມລະຊື່ແລະໂຄດເດີມຂອງຕົນ ລວມຮຽກວ່າ ມະຫາສະມຸດ ທັງໝົດ ພິກຂຸທັງຫຼາຍ ການທີ່ມະຫານະທີທຸກສາຍ ຄື ຄົງຄາ ຍະມຸນາ ອະຈິຣະວະດີ ສະຣະພູ ມະຮີ ໄຫຼລົງສູ່ມະຫາສະມຸດແລ້ວ ຍ່ອມລະຊື່ແລະໂຄດເດີມຂອງຕົນ ລວມຮຽກວ່າ ມະຫາສະມຸດ ທັງໝົດນີ້ເປັນສິ່ງທີ່ໜ້າ ອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໔ ໃນມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໕. ແມ່ນ້ຳສາຍໃດສາຍໜຶ່ງໃນໂລກ ທີ່ໄຫຼລວມລົງສູ່ມະຫາສະມຸດ ແລະສາຍຝົນຕົກລົງຈາກຟາກຟ້າກໍບໍ່ເຮັດໃຫ້ມະຫາສະມຸດຂາດຫຼືເຕັມໄດ້ ພິກຂຸທັງຫຼາຍ ການທີ່ແມ່ນ້ຳສາຍໃດສາຍໜຶ່ງໃນໂລກທີ່ໄຫຼລວມລົງສູ່ມະຫາສະມຸດ ແລະສາຍຝົນຕົກລົງຈາກຟາກຟ້າ ກໍບໍ່ເຮັດໃຫ້ມະຫາສະມຸດຂາດຫຼືເຕັມໄດ້ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໕ ໃນມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໖. ມະຫາສະມຸດມີຣົສດຽວ ຄື ຣົດເຄັມ ພິກຂຸທັງຫຼາຍ ການທີ່ມະຫາສະມຸດ ມີຣົດດຽວ ຄື ຣົດເຄັມ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໖ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໗. ມະຫາສະມຸດມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ ຫອຍສັງ ສີລາ ແກ້ວປະພານ ເງິນ ຄຳ ທັບທິມ ແກ້ວຕາແມວ ພິກຂຸທັງຫຼາຍ ການທີ່ມະຫາສະມຸດມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ ສັງ ສີລາ ແກ້ວປະພານ ເງິນ ຄຳ ທັບທິມ ແກ້ວຕາແມວ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໗ ໃນມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີ ໃນມະຫາສະມຸດ

໘. ມະຫາສະມຸດເປັນບ່ອນຢູ່ອາໄສຂອງສັດຂະໜາດໃຫຍ່ ຄື ປາຕິມິ ປາຕິມິງຄະລະ ປາຕິມິຕິມິງຄະລະ[໑] ອະສູນ ນາກ ຄົນທັນ ມີລຳໂຕ ໑໐໐ ໂຍດກໍມີ ມີລຳໂຕ ໒໐໐ ໂຍດກໍມີ ມີລຳໂຕ ໓໐໐ ໂຍດກໍມີ ມີລຳໂຕ ໔໐໐ ໂຍດກໍມີ ມີລຳໂຕ ໕໐໐ ໂຍດກໍມີ ພິກຂຸທັງຫຼາຍ ການທີ່ມະຫາສະມຸດເປັນບ່ອນຢູ່ອາໄສຂອງສັດຂະໜາດໃຫຍ່ ຄື ປາຕິມິ ປາຕິມິງຄະລະ ປາຕິມິຕິມິງຄະລະ ອະສູນ ນາກ ຄົນທັນ ມີລຳໂຕ ໑໐໐ ໂຍດກໍມີ ມີລຳໂຕ ໒໐໐ ໂຍດກໍມີ ມີລຳໂຕ ໓໐໐ ໂຍດກໍມີ ມີລຳໂຕ ໔໐໐ ໂຍດກໍມີ ມີລຳໂຕ ໕໐໐ ໂຍດກໍມີ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໘ ໃນມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

ພິກຂຸທັງຫຼາຍ ໃນມະຫາສະມຸດມີສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການນີ້ແລ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ໃນທຳວິໄນນີ້ ມີທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການ ຄື

໑. ທຳວິໄນນີ້ມີການສຶກສາໄປຕາມລຳດັບ ມີການພ່ຳເພັງໄປຕາມລຳດັບ ມີການປະຕິບັດໄປຕາມລຳດັບ[໒] ບໍ່ແມ່ນມີການບັນລຸອະຣະຫັດຕະຜົນໂດຍທັນທີ ຄື ມະຫາສະມຸດທີ່ຕ່ຳໄປໂດຍລຳດັບ ລາດໄປໂດຍລຳດັບ ເລິກລົງໄປໂດຍລຳດັບ ບໍ່ເລິກຊັນດິ່ງໄປທັນທີ ພິກຂຸທັງຫຼາຍ ການທີ່ທຳວິໄນນີ້ມີການສຶກສາໄປຕາມລຳດັບ ມີການພ່ຳເພັງໄປຕາມລຳດັບ ມີການປະຕິບັດໄປຕາມລຳດັບ ບໍ່ແມ່ນມີການບັນລຸອະຣະຫັດຕະຜົນໂດຍທັນທີ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໑ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍ ພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໘. ສາວົກທັງຫຼາຍຂອງເຮົາຍ່ອມບໍ່ລະເມີດສິກຂາບົດທີ່ເຮົາບັນຍັດໄວ້ ແມ່ນຍ້ອນເຫດແຫ່ງຊີວິດ ຄືມະຫາສະມຸດທີ່ມີປົກກະຕິຄືເກົ່າ ບໍ່ລົ້ນຝັ່ງ ພິກຂຸທັງຫຼາຍການທີ່ສາວົກທັງຫຼາຍຂອງເຮົາບໍ່ລະເມີດສິກຂາບົດທີ່ເຮົາບັນຍັດໄວ້ ແມ່ນຍ້ອນເຫດແຫ່ງຊີວິດ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໘ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວ ຕ່າງພາກັນຍິນດີໃນທຳວິໄນນີ້

໙. ບຸກຄົນໃດທຸສິນ ມີທຳຊົ່ວຊາມ ບໍ່ສະອາດ ມີຄວາມປະພຶດທີ່ໜ້າລັງກຽດ ມີວຽກງານປົກປິດ ບໍ່ແມ່ນສະມະນະ ແຕ່ປະຕິຍານວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີ ແຕ່ປະຕິຍານວ່າເປັນພົມມະຈາຣີ ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນຄືຂີ້ເຫຍື່ອ ສົງກໍບໍ່ຢູ່ຮ່ວມກັບບຸກຄົນນັ້ນ ຍ່ອມປະຊຸມກັນນຳເຂົາອອກໄປທັນທີ ແມ່ນເຂົາຈະນັ່ງຢູ່ໃນທ່າມກາງພິກຂຸສົງ ກໍຍັງຫ່າງໄກຈາກສົງ ແລະສົງກໍຫ່າງໄກຈາກເຂົາ ຄືມະຫາສະມຸດ ບໍ່ຢູ່ຮ່ວມກັບຊາກສົບ ຍ່ອມຊັດຊາກສົບຂຶ້ນຝັ່ງຈົນເຖິງເທິງບົກທັນທີ ພິກຂຸທັງຫຼາຍ ການທີ່ບຸກຄົນໃດທຸສິນ ມີທຳຊົ່ວຊາມ ບໍ່ສະອາດ ມີຄວາມປະພຶດທີ່ໜ້າລັງກຽດ ມີວຽກງານປົກປິດ ບໍ່ແມ່ນສະມະນະ ແຕ່ປະຕິຍານວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີ ແຕ່ປະຕິຍານວ່າເປັນພົມມະຈາຣີ ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນຄືຂີ້ເຫຍື່ອ ສົງບໍ່ຢູ່ຮ່ວມກັບບຸກຄົນນັ້ນ ຍ່ອມປະຊຸມກັນນຳເຂົາອອກໄປທັນທີ ແມ່ນເຂົາຈະນັ່ງຢູ່ໃນທ່າມກາງ ພິກຂຸສົງ ກໍຍັງຫ່າງໄກຈາກສົງ ແລະສົງກໍຫ່າງໄກຈາກເຂົາ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໙ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໔. ວັນນະ ໔ ເຫຼົ່ານີ້ ຄື ກະສັດ ພາມ ແພດ ສູດ ອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດແລ້ວ ຍ່ອມລະຊື່ແລະໂຄດເດີມຂອງຕົນ ລວມຮຽກວ່າ ສະມະນະສາກະຍະບຸດ ທັງໝົດ ຄືມະຫານະທີທຸກສາຍ ຄືຄົງຄາ ຍະມຸນາ ອະຈິຣະວະດີ ສະຣະພູ ມະຮີ ໄຫຼລົງສູ່ມະຫາສະມຸດແລ້ວຍ່ອມລະຊື່ແລະໂຄດເດີມຂອງຕົນລວມຮຽກວ່າ ມະຫາສະມຸດທັງໝົດ ພິກຂຸທັງຫຼາຍ ການທີ່ວັນນະ ໔ ເຫຼົ່ານີ້ ຄື ກະສັດ ພາມ ແພດ ສູດ ອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດແລ້ວ ຍ່ອມລະຊື່ແລະໂຄດເດີມຂອງຕົນ ລວມຮຽກວ່າ ສະມະນະສາກະຍະບຸດ ທັງໝົດ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໔ ໃນທຳວິໄນນີ້ ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໕. ແມ່ນຫາກພິກຂຸຈຳນວນຫຼາຍປະຣິນິບພານດ້ວຍອະນຸປາທິເສສນິບພານທາດ ກໍບໍ່ເຮັດໃຫ້ ນິບພານຂາດຫຼືເຕັມໄດ້ ຄືແມ່ນ້ຳສາຍໃດສາຍໜຶ່ງ ໃນໂລກ ທີ່ໄຫຼລວມລົງສູ່ມະຫາສະມຸດ ແລະສາຍຝົນຕົກລົງຈາກຟາກຟ້າ ກໍບໍ່ເຮັດໃຫ້ມະຫາສະມຸດຂາດຫຼືເຕັມໄດ້ ພິກຂຸທັງຫຼາຍ ການທີ່ແມ່ນຫາກພິກຂຸຈຳນວນຫຼາຍປະຣິນິບພານດ້ວຍອະນຸປາທິເສສະນິບພານທາດ ກໍບໍ່ໃຫ້ເຮັດນິບພານຂາດຫຼືເຕັມໄດ້ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໕ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວ ຕ່າງພາກັນຍິນດີໃນທຳວິໄນນີ້

໖. ທຳວິໄນນີ້ມີຣົດດຽວຄືວິມຸດຕິຣົດ ຄືມະຫາສະມຸດມີຣົດດຽວ ຄື ຣົດເຄັມ ພິກຂຸທັງຫຼາຍ ການທີ່ທຳວິໄນນີ້ມີຣົດດຽວຄືວິມຸດຕິຣົດ ນີ້ເປັນທຳທີ່ໜ້າອັດສະຈັນບໍ່ເຄີຍຜາກົດ ປະການທີ ໖ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໗. ທຳວິໄນນີ້ມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ຄືມະຫາສະມຸດມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ ຫອຍສັງ ສິລາ ແກ້ວປະພານ ເງິນ ຄຳທັບທິມ ແກ້ວຕາແມວ ພິກຂຸທັງຫຼາຍ ການທີ່ທຳວິໄນນີ້ ມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໗ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໘. ທຳວິໄນນີ້ເປັນບ່ອນຢູ່ຂອງຜູ້ໃຫຍ່ ຄື ພຣະໂສດາບັນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ພຣະສະກະທາຄາມີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ ພຣະອະນາຄາມີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ ພຣະອະຣະຫັນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ ຄືມະຫາສະມຸດເປັນບ່ອນຢູ່ອາໄສຂອງສັດຂະໜາດໃຫຍ່ ຄືປາຕິມິ ປາຕິມິງຄະລະ ປາຕິມິຕິມິງຄະລະ ອະສູນ ນາກ ຄົນທັນ ມີລຳໂຕ ໑໐໐ ໂຍດກໍມີ ມີລຳໂຕ ໒໐໐ ໂຍດກໍມີ ມີລຳໂຕ ໓໐໐ ໂຍດກໍມີ ມີລຳໂຕ ໔໐໐ ໂຍດກໍມີ ມີລຳໂຕ ໕໐໐ ໂຍດກໍມີ ພິກຂຸທັງຫຼາຍ ການທີ່ທຳວິໄນນີ້ເປັນບ່ອນຢູ່ຂອງຜູ້ໃຫຍ່ ຄື ພຣະໂສດາບັນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ພຣະສະກະທາຄາມີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະ

ກະທາຄາມິຜົນ ພຣະອະນາຄາມີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ພຣະອະຣະຫັນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະ ຫັດຕະຜົນ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໘ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

ພິກຂຸທັງຫຼາຍ ໃນທຳວິໄນນີ້ມີທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການ ນີ້ແລ ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ**

ຍິ່ງອັດ ຍິ່ງຮົ່ວ[໑] ເປີດແລ້ວບໍ່ຮົ່ວ[໒]
ຍ້ອນແນວນັ້ນ ເພິ່ງເປີດສິ່ງທີ່ອັດ
ເມື່ອເປັນດັ່ງນີ້ ສິ່ງທີ່ເປີດນັ້ນກໍຈະບໍ່ຮົ່ວ[໓]

**ອຸໂປສະຖະສູດທີ ໕ ຈົບ**

## ໖. ໂສນະສູດ[໔]

## ວ່າດ້ວຍພຣະໂສນະເຖຣະ

[໔໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະມະຫາກັດຈານະພັກຢູ່ທີ່ພູປະວັດຕະ ເມືອງກຸຣຸຣະຄະຣະ ແຄວັ້ນອະວັນຕີ ຄັ້ງນັ້ນ ອຸປາສົກຊື່ໂສນະ ກຸຕິກັນນະເປັນອຸປັດຖາກຂອງທ່ານພຣະມະຫາກັດຈານະ

ຄັ້ງນັ້ນ ອຸປາສົກຊື່ໂສນະ ກຸຕິກັນນະຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງ ແນວນີ້ວ່າ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນ ຄົບຖ້ວນ ຄືຫອຍສັງທີ່ຂັດດີແລ້ວ ຄືທີ່ພຣະມະຫາກັດຈານະສະແດງທຳໄວ້ ບໍ່ແມ່ນກະທຳໄດ້ງ່າຍ ທາງທີ່ດີເຮົາຄວນແຖຜົມແຖໜວດ ນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນບວດເປັນບັນພະຊິດ

ຕໍ່ມາ ເຂົາເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະມະຫາກັດຈານະດັ່ງນີ້ວ່າ ທ່ານຜູ້ຈະເລີນ ຂໍໂອກາດ ຂ້ານ້ອຍຫຼີບຫຼີກ ຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງແນວນີ້ວ່າ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຄົບຖ້ວນຄືຫອຍສັງທີ່ຂັດດີແລ້ວ ຄືທີ່ພຣະມະຫາກັດຈານະ ສະແດງທຳໄວ້ ບໍ່ແມ່ນກະທຳໄດ້ງ່າຍ ທາງທີ່ດີເຮົາຄວນແຖຜົມແຖໜວດ ນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນບວດເປັນບັນພະຊິດ ຂໍພຣະຜູ້ເປັນເຈົ້າມະຫາກັດຈານະໂຜດໃຫ້ຂ້ານ້ອຍບວດ ດ້ວຍເທີ້ນ ຂ້ານ້ອຍ

ເມື່ອເຂົາກ່າວແນວນີ້ ທ່ານພຣະມະຫາກັດຈານະຈຶ່ງກ່າວກັບເຂົາດັ່ງນີ້ວ່າ ໂສນະ ການປະພຶດພົມມະຈັນເຊິ່ງຕ້ອງບໍຣິໂພກອາຫານຄາບດຽວ ນອນຜູ້ດຽວຈົນຕະຫຼອດຊີບ ເຮັດໄດ້ຍາກ ແຕ່ຖ້າຈັ່ງຊັ້ນແລ້ວ ໂສນະ ທ່ານເປັນຄະລືຫັດຢູ່ເຮືອນນັ້ນແລ ຈົ່ງໝັ່ນປະພຶດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ ເຊິ່ງເປັນພົມມະຈັນທີ່ຕ້ອງບໍຣິໂພກອາຫານຄາບດຽວ ນອນຜູ້ດຽວ ຕາມເວລາທີ່ເໝາະສົມເທີ້ນ໌ ຄັ້ງນັ້ນ ຄວາມຄິດທີ່ນ້ອມໄປເພື່ອບັນພະຊາຂອງອຸປາສົກໂສນະກຸຕິກັນນະລະງັບໄປ

ແມ່ນເທື່ອທີ ໒ ອຸປາສົກໂສນະ ກຸຕິກັນນະຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງແນວນີ້ວ່າ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຄົບຖ້ວນ ຄືຫອຍສັງທີ່ຂັດດີແລ້ວ ຄືທີ່ພຣະມະຫາກັດຈານະສະແດງທຳໄວ້ ບໍ່ແມ່ນກະທຳໄດ້ງ່າຍ ທາງທີ່ດີເຮົາຄວນແຖຜົມແຖໜວດ ນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນບວດເປັນບັນພະຊິດ ແລ້ວເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະມະຫາກັດຈານະດັ່ງນີ້ວ່າ ທ່ານຜູ້ຈະເລີນ ຂໍໂອກາດ ຂ້ານ້ອຍຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງແນວນີ້ວ່າ ການທີ່ຜູ້ຄອງເຮືອນຈະປະພຶດພົມມະຈັນ ໃຫ້ບໍລິສຸດບໍລິບູນຄົບຖ້ວນຄືຫອຍສັງທີ່ຂັດດີແລ້ວ ແນວທີ່ພຣະມະຫາກັດຈານະສະແດງທຳໄວ້ ບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີ ເຮົາຄວນແຖຜົມແຖໜວດ ນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນ ບວດເປັນບັນພະຊິດ ຂໍພຣະຜູ້ເປັນເຈົ້າມະຫາກັດຈານະໂຜດໃຫ້ຂ້ານ້ອຍບວດດ້ວຍເທີ້ນ ຂ້ານ້ອຍ

ທ່ານພຣະມະຫາກັດຈານະໄດ້ກ່າວກັບເຂົາດັ່ງນີ້ວ່າ ໂສນະ ການປະພຶດພົມມະຈັນເຊິ່ງຕ້ອງບໍຣິໂພກອາຫານຄາບດຽວ ນອນຜູ້ດຽວຈົນຕະຫຼອດຊີບ ເຮັດໄດ້ຍາກ ແຕ່ຖ້າຈັ່ງຊັ້ນແລ້ວ ໂສນະ ທ່ານເປັນຄະລືຫັດຢູ່ເຮືອນນັ້ນແລ ຈົ່ງໝັ່ນປະພຶດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ ເຊິ່ງເປັນພົມມະຈັນທີ່ຕ້ອງບໍຣິໂພກອາຫານຄາບດຽວ ນອນຜູ້ດຽວ ຕາມເວລາທີ່ເໝາະສົມເທີ້ນ ຄັ້ງນັ້ນ ຄວາມຄິດທີ່ນ້ອມໄປເພື່ອບັນພະຊາຂອງອຸປາສົກໂສນະກຸຕິກັນນະ ລະງັບໄປ

ແມ່ນເທື່ອທີ ໓ ອຸປາສົກໂສນະ ກຸຕິກັນນະຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງແນວນີ້ວ່າ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຄົບຖ້ວນ ຄືຫອຍສັງທີ່ຂັດດີ

ແລ້ວ ຄືທີ່ພຣະມະຫາກັດຈານະສະແດງທຳໄວ້ ບໍ່ແມ່ນກະທຳໄດ້ງ່າຍ ທາງທີ່ດີເຮົາຄວນແຖຜົມແຖໜວດ ນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນບວດເປັນບັນພະຊິດ ແລ້ວເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນໄດ້ກ່າວກັບທ່ານ ພຣະມະຫາກັດຈານະດັ່ງນີ້ວ່າ

ທ່ານຜູ້ຈະເລີນ ຂໍໂອກາດ ຂ້ານ້ອຍຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງ ແນວນີ້ວ່າ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຄົບຖ້ວນ ຄືຫອຍສັງທີ່ຂັດດີແລ້ວ ຄືທີ່ພຣະມະຫາກັດຈານະສະແດງທຳໄວ້ ບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີເຮົາຄວນແຖຜົມແຖໜວດ ນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນບວດເປັນບັນພະຊິດ ຂໍພຣະຜູ້ເປັນເຈົ້າມະຫາກັດຈານະໂຜດໃຫ້ຂ້ານ້ອຍບວດດ້ວຍເທີ້ນ ຂ້ານ້ອຍ

ລຳດັບນັ້ນ ທ່ານພຣະມະຫາກັດຈານະຈຶ່ງໃຫ້ອຸປາສົກໂສນະກຸຕິກັນນະບວດ ກໍສະໄໝນັ້ນອະວັນຕີທັກຂິນາບົດມີພິກຂຸໜ້ອຍ ເວລານັ້ນ ທ່ານພຣະມະຫາກັດຈານະຈັດຫາພິກຂຸສົງຈາກ ບ່ອນນັ້ນ ໆ ໃຫ້ຄົບອົງປະຊຸມຄື ໑໐ ອົງໄດ້ຍາກລຳບາກ ເວລາລ່ວງໄປເຖິງ ໓ ປີ ຈຶ່ງໃຫ້ທ່ານໂສນະອຸປະສົມ ບົດໄດ້

ສະໄໝນັ້ນ ທ່ານພຣະໂສນະອອກພັນສາແລ້ວ ຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງແນວນີ້ວ່າ ເຮົາບໍ່ເຄີຍເຝົ້າພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນສະເພາະພຣະພັກເລີຍ ພຽງແຕ່ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຊົງມີພຣະລັກສະນະແນວນີ້ແລະແນວນີ້ ຖ້າພຣະອຸປັດຊາອະນຸຍາດ ເຮົາຈະໄປເຂົ້າເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ

ຄັ້ງນັ້ນໃນເວລາຄ່ຳ ທ່ານພຣະໂສນະອອກຈາກບ່ອນຫຼີບຫຼີກ ເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະມະຫາກັດຈານະດັ່ງນີ້ວ່າ ທ່ານຜູ້ຈະເລີນ ຂໍໂອກາດ ຂ້ານ້ອຍຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງແນວນີ້ວ່າ ເຮົາບໍ່ເຄີຍເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ສະເພາະພຣະພັກເລີຍ ພຽງແຕ່ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງມີພຣະລັກສະນະແນວນີ້ແລະແນວນີ້ ຖ້າພຣະອຸປັດຊາອະນຸຍາດ ຂ້ານ້ອຍຈະໄປເຂົ້າເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ

ທ່ານພຣະມະຫາກັດຈານະກ່າວວ່າ ດີແລ້ວ ດີແລ້ວ ໂສນະ ທ່ານຈົ່ງໄປເຂົ້າເຝົ້າພຣະຜູ້ມີ ພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນເທີ້ນ ທ່ານຈະເຫັນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ໜ້າເຫຼື້ອມໃສ ຊົງເປັນບ່ອນຕັ້ງແຫ່ງຄວາມເຫຼື້ອມໃສ ມີພຣະອິນຊີສະງົບ ມີພຣະຫະໄທສະງົບ ຊົງບັນລຸທະມະຖະແລະສະມະຖະສູງສຸດ ຊົງເຝິກຝົນແລ້ວ ຄຸ້ມຄອງແລ້ວ ຊົງສັງລວມອິນຊີ ຊົງເປັນຜູ້ປະເສີດ ທ່ານເມື່ອເຫັນແລ້ວຈົ່ງຖວາຍອະພິວາດພຣະບາດທັງສອງຂອງ

ພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຈຶ່ງທູນຖາມເຖິງສຸກຂະພາບ ຄວາມມີ ໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ ຕາມຄຳຂອງເຮົາວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທ່ານພຣະມະຫາກັດຈານະ ພຣະອຸປັດຊາຂອງຂ້າພຣະອົງ ຂໍຖວາຍອະພິວາດພຣະບາດທັງສອງ ຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຂາບທູນ ຖາມເຖິງສຸກຂະພາບ ຄວາມມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ

ທ່ານພຣະໂສນະຮັບຄຳຂອງທ່ານພຣະມະຫາກັດຈານະແລ້ວ ຊົມຊື່ນ ຍິນດີຄຳທີ່ທ່ານພຣະມະຫາກັດຈານະກ່າວແລ້ວ ລຸກຈາກອາສະນະ ໄຫວ້ທ່ານພຣະມະຫາກັດຈານະ ກະທຳປະທັກຂິນແລ້ວຈຶ່ງມ້ຽນເສນາສະນະ ຖືບາດແລະຈີວອນ ຈາຣິກໄປທາງນະຄອນສາວັດຖີ ທ່ຽວຈາຣິກໄປໂດຍລຳດັບຈົນເຖິງພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ແລ້ວເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈົນຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະມະຫາກັດຈານະພຣະອຸປັດຊາຂອງຂ້າພຣະອົງ ຂໍຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍຂະໜ່ອມຂາບທູນຖາມເຖິງສຸກຂະ ພາບ ຄວາມມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທ່ານເດີນທາງມາໂດຍບໍ່ລຳບາກບໍ ບິນທະບາດບໍ່ລຳບາກບໍ

ທ່ານພຣະໂສນະທູນຕອບວ່າ ສະບາຍດີ ຂ້ານ້ອຍ ພໍເປັນຢູ່ໄດ້ ຂ້ານ້ອຍ ຂ້າພຣະອົງເດີນທາງມາໂດຍບໍ່ລຳບາກ ທັງບິນທະບາດກໍບໍ່ລຳບາກ ຂ້ານ້ອຍ

ຕໍ່ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ອານົນ ທ່ານຈົ່ງຈັດເສນາສະນະຕ້ອນຮັບພິກຂຸອາຄັນຕຸກະອົງນີ້ ຄັ້ງນັ້ນ ທ່ານພຣະອານົນຄິດດັ່ງນີ້ວ່າ ການທີ່ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ ອານົນ ທ່ານຈົ່ງຈັດເສນາສະນະຕ້ອນຮັບພິກຂຸອາຄັນຕຸກະອົງນີ້ ສຳລັບພິກຂຸອົງໃດມີໄນໃຫ້ຮູ້ວ່າພຣະຜູ້ມີພຣະພາກເຈົ້າ ມີພຣະປະສົງຈະປະທັບຢູ່ໃນພຣະວິຫານຫຼັງດຽວກັບພິກຂຸອົງນັ້ນ ພຣະຜູ້ມີພຣະພາກເຈົ້າມີພຣະປະສົງ ຈະປະທັບຢູ່ໃນພຣະວິຫານຫຼັງດຽວກັບທ່ານພຣະໂສນະ ຈຶ່ງຈັດ ເສນາສະນະຕ້ອນຮັບທ່ານ ພຣະໂສນະໃນພຣະວິຫານອັນເປັນທີ່ປະທັບຂອງພຣະຜູ້ມີພຣະພາກເຈົ້າ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກາງແຈ້ງຈົນເດິກ ຈຶ່ງຊົງລ້າງພຣະບາດແລ້ວສະເດັດເຂົ້າພຣະວິຫານ ຝ່າຍທ່ານພຣະໂສນະກໍຢູ່ກາງແຈ້ງຈົນເດິກ ຈຶ່ງລ້າງຕີນແລ້ວເຂົ້າພຣະວິຫານ ພໍເຖິງເວລາໃກ້ຮຸ່ງ ພຣະຜູ້ມີພຣະພາກເຈົ້າຊົງລຸກຂຶ້ນແລ້ວ ຊົງເຊື້ອເຊີນທ່ານພຣະໂສນະວ່າພິກຂຸ ທ່ານຈົ່ງກ່າວທຳຕາມຖະຫນັດເທີ້ນ[໑]

ທ່ານພຣະໂສນະທູນຮັບສະໜອງພຣະດຳຣັດແລ້ວ ໄດ້ສູດພຣະສູດທັງໝົດ ໑໖ ສູດ ໃນອັດຖະກະວັກ໌ ໂດຍທຳນອງສໍຣະພັນຍະ

ເມື່ອທ່ານພຣະໂສນະສູດທຳນອງສໍຣະພັນຍະຈົບແລ້ວ ພຣະຜູ້ມີພຣະພາກເຈົ້າຊົງຊື່ນຊົມຢ່າງຍິ່ງ ຈຶ່ງໄດ້ປະທານສາທຸການວ່າ ດີແລ້ວ ດີແລ້ວ ພິກຂຸ ທ່ານຮ່ຳຮຽນສູດ ໑໖ ສູດໃນອັດຖະກະວັກມາດີແລ້ວ ຈື່ໄດ້ແມ່ນຍຳດີ ອອກສຽງສູດໄດ້ມ່ວນຫູ ບໍ່ມີບ່ອນໜ້າຕຳໜິ ບອກຄວາມໝາຍໄດ້ຊັດເຈນ ທ່ານມີພັນສາທໍ່ໃດ

ທ່ານພຣະໂສນະທູນຕອບວ່າ ຂ້າພຣະອົງບວດໄດ້ ໑ ພັນສາ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸ ຍ້ອນເຫດໃດ ທ່ານຈຶ່ງຊ້າຢູ່ນໍ

ທ່ານພຣະໂສນະຂາບທູນວ່າ ຂ້າພຣະອົງເຫັນໂທດໃນກາມທັງຫຼາຍດົນແລ້ວແຕ່ຜູ້ຢູ່ຄອງເຮືອນວຸ່ນວາຍ ມີກິດຫຼາຍ ມີທຸລະຫຼາຍ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ**

ອາຣະຍະຊົນເຫັນໂທດໃນໂລກ[໑]
ຮູ້ທຳທີ່ບໍ່ມີອຸປະທິ[໒] ຈຶ່ງບໍ່ຍິນດີໃນບາບ
ຍ້ອນຄົນບໍລິສຸດຍ່ອມບໍ່ຍິນດີໃນບາບ[໓]

**ໂສນະສູດທີ ໖ ຈົບ**

## ໗. ກັງຂາເຣວະຕະສູດ
## ວ່າດ້ວຍພຣະກັງຂາເຣວະຕະເຖຣະ

[໔໗] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະກັງຂາເຣວະຕະນັ່ງຄູ້ບັນລັງ ຕັ້ງກາຍກົງພິຈາລະນາກັງຂາວິຕະຣະນະວິສຸດທິ[໔]ຂອງຕົນຢູ່ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າ ໄດ້ທອດພຣະເນດເຫັນທ່ານພຣະກັງຂາເຣວະຕະຜູ້ກຳລັງນັ່ງຄູ້ບັນລັງ ຕັ້ງກາຍກົງພິຈາລະນາກັງຂາວິຕະຣະນະວິສຸດທິຂອງຕົນຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

**ພຸດທະອຸທານ**

ຄວາມສົງໄສເຫຼົ່າໃດເຫຼົ່າໜຶ່ງທີ່ມີໃນອັດຕະພາບນີ້ຫຼືໃນອັດຕະພາບອື່ນ
ທີ່ມີໃນຄວາມຮູ້ຂອງຕົນຫຼືໃນຄວາມຮູ້ຂອງຜູ້ອື່ນ
ບຸກຄົນຜູ້ເພ່ງພິນິດ ມີຄວາມພຽນ ປະພຶດພົມມະຈັນຢູ່
ຍ່ອມລະຄວາມສົງໄສເຫຼົ່ານັ້ນທັງໝົດໄດ້໑

**ກັງຂາເຣວະຕະສູດທີ ໗ ຈົບ**

## ໘. ສັງຄະເພທະສູດ

## ວ່າດ້ວຍການເຮັດສົງໃຫ້ແຕກກັນ

[໔໘] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເວລຸວັນ ກະລັນທະກະນິວາປະສະຖານ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ໃນເວລາເຊົ້າ ມື້ອຸໂປສົດ ທ່ານພຣະອານົນຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນທະບາດໃນເມືອງຣາດຊະຄຶ

ພຣະເທວະທັດພົບທ່ານພຣະອານົນ ກຳລັງທ່ຽວບິນທະບາດໃນນະຄອນຣາດຊະຄຶ ຈຶ່ງເຂົ້າໄປຫາແລ້ວກ່າວກັບທ່ານພຣະອານົນດັ່ງນີ້ວ່າ ທ່ານອານົນ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ເຮົາຈະເຮັດອຸໂປສົດ ຈະເຮັດສັງຄະກຳແຍກຈາກພຣະຜູ້ມີພຣະພາກເຈົ້າ ແຍກຈາກພິກຂຸສົງ

ຄັ້ງນັ້ນ ທ່ານພຣະອານົນ ເມື່ອທ່ຽວບິນທະບາດໃນນະຄອນຣາດຊະຄຶແລ້ວ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ໃນເວລາເຊົ້າ ຂ້າພຣະອົງຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງຣາດຊະຄຶ ພຣະເທວະທັດພົບຂ້າພຣະອົງກຳລັງທ່ຽວບິນທະບາດໃນນະຄອນຣາດຊະຄຶ ຈຶ່ງເຂົ້າໄປຫາແລ້ວກ່າວກັບຂ້າພຣະອົງດັ່ງນີ້ວ່າ ທ່ານອານົນ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ເຮົາຈະເຮັດອຸໂປສົດ ຈະເຮັດສັງຄະກຳແຍກຈາກພຣະຜູ້ມີພຣະພາກເຈົ້າ ແຍກຈາກພິກຂຸສົງ ຂ້າແດ່ພຣະອົງຜູ້ຈະເລີນ ມື້ນີ້ ພຣະເທວະທັດຈະທຳລາຍສົງ ຈະເຮັດອຸໂປສົດ ຈະເຮັດສັງຄະກຳຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ

ກຳດີ ຄົນດີເຮັດໄດ້ງ່າຍ
ກຳດີ ຄົນຊົ່ວເຮັດໄດ້ຍາກ
ກຳຊົ່ວ ຄົນຊົ່ວເຮັດໄດ້ງ່າຍ
ກຳຊົ່ວ ພຣະອະຣິຍະທັງຫຼາຍເຮັດໄດ້ຍາກ[๑]

**ສັງຄະເພທະສູດທີ ໘ ຈົບ**

## ໙. ສະທາຍະມານະສູດ
## ວ່າດ້ວຍເດັກໜຸ່ມກ່າວຖາກຖາງຜູ້ອື່ນ

[໔໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະໄໝນັ້ນ ເດັກໜຸ່ມຈຳນວນຫຼາຍ ຍ່າງເວົ້າຖາກຖາງຜູ້ອື່ນໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ເມື່ອພຣະຜູ້ມີພຣະພາກເຈົ້າ ໄດ້ທອດພຣະເນດເຫັນເດັກໜຸ່ມເຫຼົ່ານັ້ນ ຍ່າງເວົ້າຖາກຖາງຜູ້ອື່ນຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນ ວ່າ

## ພຸດທະອຸທານ

ຄົນຟັ່ນເຟືອນ ຍົກຕົນວ່າເປັນບັນດິດ
ເອົາແຕ່ເວົ້າ ອ້າປາກເວົ້າຕາມທີ່ໂຕປາຖະໜາ
ແຕ່ບໍ່ຮູ້ສຶກວ່າເລື້ອງທີ່ຜິດຖຽງກັນຢູ່ນັ້ນກຳລັງກໍໂທດກໍ່ໄພເວນຢູ່

**ສະທາຍະມານະສູດທີ ໙ ຈົບ**

## ໑໐. ຈູລະປັນຖະກະສູດ
## ວ່າດ້ວຍພຣະຈູລະປັນຖະກະເຖຣະ

[໕໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະຈູລະປັນຖະກະນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະຈູລະປັນຖະກະຜູ້ກຳລັງນັ່ງຄູ້ບັນລັງ ຕັ້ງກາຍກົງດຳລົງສະຕິໄວ້ສະເພາະໜ້າຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

**ພຸດທະອຸທານ**

ພິກຂຸມີກາຍທີ່ຕັ້ງໝັ້ນ ມີຈິດທີ່ຕັ້ງໝັ້ນ
ກຳລັງຢືນ ຍ່າງ ນັ່ງ ຫຼືນອນກໍຕາມ ກໍດຳລົງສະຕິນີ້ໄວ້ໝັ້ນ
ທ່ານເພິ່ງໄດ້ຄຸນວິເສດທັງເບື້ອງຕົ້ນແລະເບື້ອງປາຍ
ເມື່ອໄດ້ຄຸນວິເສດທັງເບື້ອງຕົ້ນແລະເບື້ອງປາຍແລ້ວ
ເພິ່ງເຖິງສະຖານທີ່ທີ່ມັດຈຸຣາດແນມບໍ່ເຫັນ

**ຈູລະປັນຖະກະສູດທີ ໑໐ ຈົບ**

**ໂສນະເຖຣະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ປິຍະຕະຣະສູດ | ໒. ອັບປາຍຸກະສູດ |
| ໓. ສຸບປະພຸດທະກຸດຖິສູດ | ໔. ກຸມາຣະກະສູດ |
| ໕. ອຸໂປສະຖະສູດ | ໖. ໂສນະສູດ |
| ໗. ກັງຂາເຣວະຕະສູດ | ໘. ສັງຄະເພທະສູດ |
| ໙. ສະທາຍະມານະສູດ | ໑໐. ຈູລະປັນຖະກະສູດ |

# ໓. ຊັດຈັນທະວັກ

## ໝວດວ່າດ້ວຍຜູ້ບອດໂດຍກຳເນີດ

## ໑. ອາຍຸສັງຂາໂຣສະສັດຊະນະສູດ[១]

## ວ່າດ້ວຍການປົງພຣະຊົນມາຍຸສັງຂານ

[໕໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ກູຕາຄານສາລາປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດເຂົ້າໄປໃນເມືອງເວສາລີເພື່ອບິນທະບາດ ສະເດັດກັບຈາກບິນທະບາດຫຼັງຈາກສະເຫວີຍພຣະກະຍາຫານສຳເລັດແລ້ວ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ອານົນ ທ່ານຈົ່ງຖືນິສີທະນະ[៤] ເຮົາຈະເຂົ້າໄປພັກກາງເວັນທີ່ປາວາລະເຈດີ ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ຖືນິສີທະນະຕາມສະເດັດພຣະຜູ້ມີພຣະພາກເຈົ້າໄປຂ້າງພຣະປຣິດສະດາງ

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ປາວາລະເຈດີ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ໄດ້ຕັດກັບທ່ານພຣະອານົນດັ່ງນີ້ວ່າ ອານົນ ນະຄອນເວສາລີໜ້າອອນຊອນ ອຸເທນເຈດີໜ້າອອນຊອນ ໂຄຕະມະກະເຈດີໜ້າອອນຊອນ ສັດຕຳພະເຈດີໜ້າອອນຊອນ ພະຫຸປຸດຕະເຈດີ ໜ້າອອນຊອນ ສາຣັນທະເຈດີໜ້າອອນຊອນ ປາວາລະເຈດີໜ້າອອນຊອນ

ອິດທິບາດ ໔ ຜູ້ໃດຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມດີແລ້ວ ຜາຣົບດີແລ້ວ ຜູ້ນັ້ນເມື່ອມຸ້ງຫວັງ ເພິ່ງດຳລົງຢູ່ໄດ້ ໑ ກັບ ຫຼືເກີນກວ່າ ໑ ກັບ

ອິດທິບາດ ໔ ຕະຖາຄົດຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມດີແລ້ວ ຜາຣົບດີແລ້ວ ຕະຖາຄົດເມື່ອມຸ້ງຫວັງ ເພິ່ງດຳລົງຢູ່ໄດ້ ໑ ກັບ ຫຼືເກີນກວ່າ ໑ ກັບ

ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງທຳນິມິດທີ່ແຈ່ມແຈ້ງ ຊົງເຮັດໂອພາດທີ່ຊັດເຈນແມ່ນແນວນີ້ທ່ານພຣະອານົນກໍບໍ່ອາດຈະຮູ້ທັນ ຈຶ່ງບໍ່ຂາບທູນວິງວອນພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດດຳລົງພຣະຊົນມະຊີບຢູ່ຕະຫຼອດກັບ ຂໍພຣະສຸດຄົດເຈົ້າໂຜດດຳລົງພຣະຊົນມະຊີບຢູ່ຕະຫຼອດກັບເພື່ອເກື້ອແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່

ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍເທີ້ນ ຂ້ານ້ອຍ ທັງນີ້ ເປັນຍ້ອນທ່ານຖືການດົນໃຈ

ແມ່ນເທື່ອທີ ໔ ພຣະຜູ້ມີພຣະພາກເຈົ້າກໍໄດ້ຕັດກັບທ່ານພຣະອານົນດັ່ງນີ້ວ່າ ອານົນ ນະຄອນເວສາລີໜ້າອອນຊອນ ອຸເທນເຈດີໜ້າອອນຊອນ ໂຄຕະມະກະເຈດີໜ້າອອນຊອນ ສັດຕຳພະເຈດີ ໜ້າອອນຊອນ ພະຫຸປຸດຕະເຈດີໜ້າອອນຊອນ ສາຣັນທະເຈດີໜ້າອອນຊອນ ປາວາລະເຈດີໜ້າອອນຊອນ

ອິດທິບາດ ໔ ຜູ້ໃດຈະເລີນເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ສັ່ງສົມດີແລ້ວ ຜາຣົບດີແລ້ວ ຜູ້ນັ້ນເມື່ອມຸ້ງຫວັງ ເພິ່ງດຳລົງຢູ່ໄດ້ ໑ ກັບ ຫຼືເກີນກວ່າ ໑ ກັບ

ອິດທິບາດ ໔ ຕະຖາຄົດຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ສັ່ງສົມດີແລ້ວ ຜາຣົບດີແລ້ວ ຕະຖາຄົດເມື່ອມຸ້ງຫວັງ ເພິ່ງດຳລົງຢູ່ໄດ້ ໑ ກັບ ຫຼືເກີນກວ່າ ໑ ກັບ

ເມື່ອພຣະຜູ້ມີພຣະພາກເຈົ້າຊົງທຳນິມິດທີ່ແຈ່ມແຈ້ງ ຊົງເຮັດໂອພາດທີ່ຊັດເຈນແມ່ນແນວນີ້ທ່ານພຣະອານົນກໍບໍ່ອາດຈະຮູ້ທັນ ຈຶ່ງບໍ່ຂາບທູນວິງວອນພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ພຣະອົງຜູ້ຈະເລີນຂໍພຣະຜູ້ມີພຣະພາກເຈົ້າໂຜດດຳລົງພຣະຊົນມະຊີບຢູ່ຕະຫຼອດກັບ ຂໍພຣະສຸດຄົດເຈົ້າໂຜດດຳລົງພຣະຊົນມະຊີບຢູ່ຕະຫຼອດກັບເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍເທີ້ນ ຂ້ານ້ອຍ ທັງນີ້ເປັນຍ້ອນທ່ານຖືການດົນໃຈ

ຫຼັງຈາກນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະອານົນດັ່ງນີ້ວ່າ ອານົນ ໄປເທີ້ນທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ

ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດແລ້ວລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີ ພຣະພາກເຈົ້າ ກະທຳປະທັກຂິນແລ້ວນັ່ງທີ່ເຫງົ້າໄມ້ຕົ້ນໜຶ່ງເຊິ່ງບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ຄັນເມື່ອທ່ານພຣະອານົນຈາກໄປບໍ່ດົນມານຜູ້ມີບາບໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າຂ້າແດ່ພຣະອົງຜູ້ຈະເລີນ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານເທີ້ນ ຂໍພຣະສຸດຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກ

ເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານ ຕາບເທົ່າທີ່ເຫຼົ່າພິກຂຸຜູ້ເປັນສາວົກຂອງເຮົາຍັງບໍ່ແຫຼມຄົມ ບໍ່ໄດ້ຮັບການແນະນຳ ບໍ່ແກ່ກ້າ ບໍ່ບັນລຸທຳອັນເປັນແດນກະເສມຈາກໂຍຄະ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຖືກຍິ່ງ ບໍ່ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານຜາບປະຣັບປະວາດ ທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳບໍ່ໄດ້

ຂ້າແດ່ພຣະອົງຜູ້ຈະເລີນ ເວລານີ້ ເຫຼົ່າພິກຂຸຜູ້ເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ແຫຼມຄົມ ໄດ້ຮັບການແນະນຳ ແກ່ກ້າ ບັນລຸທຳອັນເປັນແດນກະເສມຈາກ ໂຍຄະ ເປັນພະຫູສູດ ຊົງທຳ ປະຕິບັດທຳສົມຄວນແກ່ທຳ ປະຕິບັດຖືກຍິ່ງ ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວບອກສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳໄດ້ ຂ້າແດ່ພຣະອົງຜູ້ຈະເລີນ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານເທີ້ນ ຂໍພຣະສຸດຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານ ຕາບເທົ່າທີ່ເຫຼົ່າພິກຂຸນີຜູ້ເປັນສາວິກາຂອງເຮົາຍັງບໍ່ແຫຼມຄົມ ບໍ່ໄດ້ຮັບການແນະນຳ ບໍ່ແກ່ກ້າ ບໍ່ບັນລຸທຳອັນເປັນແດນກະເສມຈາກໂຍຄະ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຖືກຍິ່ງ ບໍ່ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວແຕ່ກໍຍັງບອກສະແດງ ບັນຍັດ ກຳນົດເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳບໍ່ໄດ້

ຂ້າແດ່ພຣະອົງຜູ້ຈະເລີນ ເວລານີ້ ເຫຼົ່າພິກຂຸນີຜູ້ເປັນສາວິກາຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ແຫຼມຄົມ ໄດ້ຮັບການແນະນຳ ແກ່ກ້າ ບັນລຸທຳອັນເປັນແດນກະເສມຈາກໂຍຄະເປັນພະຫູສູດ ຊົງທຳປະຕິບັດທຳສົມຄວນແກ່ທຳ ປະຕິບັດຖືກຍິ່ງ ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວບອກສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສະແດງທຳມີປາຕິຫານຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳໄດ້ ຂ້າແດ່ພຣະອົງຜູ້ຈະເລີນ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານເທີ້ນ ຂໍພຣະສຸດຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ເຫຼົ່າອຸປາສົກຜູ້ເປັນສາວົກຂອງເຮົາຍັງບໍ່ແຫຼມຄົມ ບໍ່ໄດ້ຮັບການແນະນຳ ບໍ່ແກ່ກ້າ ບໍ່ບັນລຸທຳອັນເປັນແດນກະເສມຈາກໂຍຄະ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນ

ແກ່ທຳ ບໍ່ປະຕິບັດຖືກຍິ່ງ ບໍ່ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານຜາບ ປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳບໍ່ໄດ້

ຂ້າແດ່ພຣະອົງຜູ້ຈະເລີນ ເວລານີ້ ເຫຼົ່າອຸປາສົກຜູ້ເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ແຫຼມຄົມ ໄດ້ຮັບການແນະນຳ ແກ່ກ້າ ບັນລຸທຳອັນເປັນແດນກະເສມຈາກໂຍຄະ ເປັນພະຫູສູດ ຊົງທຳ ປະຕິບັດທຳສົມຄວນແກ່ທຳ ປະຕິບັດຖືກຍິ່ງ ປະພຶດ ຕາມທຳ ຮຽນກັບອາຈານຂອງຕົນແລ້ວບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສະແດງທຳມີປາຕິຫານຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳໄດ້ ຂ້າແດ່ພຣະອົງຜູ້ຈະເລີນ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານເທີ້ນ ຂໍພຣະສຸດຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ເຫຼົ່າອຸປາສິກາຜູ້ເປັນສາວິກາຂອງເຮົາຍັງບໍ່ແຫຼມຄົມ ບໍ່ໄດ້ຮັບການແນະນຳ ບໍ່ແກ່ກ້າ ບໍ່ບັນລຸທຳອັນເປັນແດນກະເສມຈາກໂຍຄະ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຖືກຍິ່ງ ບໍ່ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານຜາບ ປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳບໍ່ໄດ້

ຂ້າແດ່ພຣະອົງຜູ້ຈະເລີນ ເວລານີ້ ເຫຼົ່າອຸປາສິກາຜູ້ເປັນສາວິກາຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ແຫຼມຄົມ ໄດ້ຮັບການແນະນຳ ແກ່ກ້າ ບັນລຸທຳອັນເປັນແດນກະເສມຈາກໂຍຄະ ເປັນພະຫູສູດ ຊົງທຳ ປະຕິບັດທຳສົມຄວນແກ່ທຳ ປະຕິບັດຖືກຍິ່ງ ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສະແດງທຳມີປາຕິຫານຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍ ໂດຍຖືກຕ້ອງຕາມທຳໄດ້ ຂ້າແດ່ພຣະອົງຜູ້ຈະເລີນ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານເທີ້ນ ຂໍພຣະສຸດຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ພົມມະຈັນ[9]ນີ້ຂອງເຮົາຍັງບໍ່ຈະເລີນ ແຜ່ຫຼາຍ ກວ້າງຂວາງ ຮູ້ກັນສ່ວນຫຼາຍ ເປັນປຶກແຜ່ນ ກະທັ່ງເທວະດາແລະມະນຸດທັງຫຼາຍປະກາດໄດ້ດີແລ້ວ[6] ຂ້າແດ່ພຣະອົງຜູ້ຈະເລີນ ເວລານີ້ ພົມມະຈັນຂອງພຣະຜູ້ມີພຣະພາກເຈົ້າຈະເລີນແຜ່ຫຼາຍ ກວ້າງຂວາງ ຮູ້ກັນສ່ວນຫຼາຍ ເປັນປຶກແຜ່ນ ກະທັ່ງເທວະດາແລະມະນຸດທັງຫຼາຍປະກາດໄດ້ດີແລ້ວ ຂ້າແດ່ພຣະອົງຜູ້ຈະເລີນ

ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານເທີ້ນ ຂໍພຣະສຸດຄົດເຈົ້າໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ

ເມື່ອມານຂາບທູນແນວນີ້ແລ້ວ ພຣະຜູ້ມີພາກໄດ້ຕັດຕອບວ່າ ມານຜູ້ມີບາບ ທ່ານຈົ່ງຂົນຂວາຍໜ້ອຍເທີ້ນ ບໍ່ດົນປານໃດ ຕະຖາຄົດຈະປະຣິນິບພານ ຈາກນີ້ໄປອີກ ໓ ເດືອນ ຕະຖາຄົດຈະປະຣິ ນິບພານ

ເວລານັ້ນ ພຣະຜູ້ມີພຣະພາກເຈົ້າຊົງມີສະຕິສໍາປະຊັນຍະ ຊົງປົງພຣະຊົນມາຍຸສັງຂານ[๑] ທີ່ປາວາລະເຈດີ ເມື່ອພຣະຜູ້ມີພຣະພາກເຈົ້າຊົງປົງພຣະຊົນມາຍຸສັງຂານແລ້ວ ໄດ້ເກີດແຜ່ນດິນໄຫວຄັ້ງໃຫຍ່ ເປັນຕາຢ້ານ ຂົນຫົວລຸກ ທັງກອງທິບກໍດັງກຶກກ້ອງ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ**

ມຸນີລະກໍາທັງທີ່ສ່ວນໄດ້ ແລະສ່ວນບໍ່ໄດ້
ອັນເປັນເຫດກໍ່ກໍາເນີດເປັນເຄື່ອງປຸງແຕ່ງພົບໄດ້ແລ້ວ
ຍິນດີໃນພາຍໃນ ມີໃຈໝັ້ນຄົງ
ທໍາລາຍກິເລດທີ່ເກີດໃນຕົນໄດ້
ຄືນັກຮົບທໍາລາຍເກາະໄດ້ ສັນນັ້ນ

**ອາຍຸສັງຂາໂຣສະສັດຊະນະສູດທີ ໑ ຈົບ**

## ໘. ສັດຕະຊະຕິລະສູດ[๒]

## ວ່າດ້ວຍນັກບວດພວກລະ ໗ ຄົນ

[໕໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຜາສາດໃນບຸບພາຣາມຂອງນາງ ວິສາຂາມິຄາຣະມາຕາ ເຂດນະຄອນສາວັດຖີ ສະໄໝນັ້ນ ໃນເວລາຄໍ່າ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ ປະທັບນັ່ງຢູ່ທີ່ຊຸ້ມປະຕູພາຍນອກ ລໍາດັບນັ້ນ ພຣະເຈົ້າປະເສນທິໂກສົນສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນ

ສະໄໝນັ້ນ ຊະດິນ ໆ ຄົນ ນິຄົນ ໆ ຄົນ ອະເຈລະກະ ໆ ຄົນ ເອກະສາດົກ ໆ ຄົນ ແລະປະຣິພາຊົກ ໆ ຄົນຜູ້ມີຂົນຂີ້ແຮ້ ເລັບ ແລະຂົນຍາວ ຖືເຄື່ອງບໍຣິຂານຕ່າງ ໆ ຍ່າງກາຍໄປບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ພຣະເຈົ້າປະເສນທິໂກສົນໄດ້ທອດພຣະເນດເຫັນຊະດິນ ໆ ຄົນ ນິຄົນ ໆ ຄົນ ອະເຈລະກະ ໆ ຄົນ ເອກະສາດົກ ໆ ຄົນ ແລະປະຣິພາຊົກ ໆ ຄົນຜູ້ມີຂົນຂີ້ແຮ້ ເລັບ ແລະຂົນຍາວ ຖືເຄື່ອງບໍຣິຂານຕ່າງ ໆ ຍ່າງກາຍໄປບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ຈຶ່ງສະເດັດລຸກຈາກທີ່ປະທັບນັ່ງ ຊົງຫົ່ມພຣະພູສາບ່ຽງພຣະອັງສາຂ້າງໜຶ່ງ ຊົງຈົດພຣະຊານຸມົນທົນເບື້ອງຂວາ ລົງທີ່ພື້ນດິນ ຊົງປະຄອງອັນຊະລີໄປທາງນັກບວດເຫຼົ່ານັ້ນ ແລ້ວຊົງປະກາດພຣະນາມ ໓ ຄັ້ງວ່າ ທ່ານຜູ້ຈະເລີນ ຂ້າພະເຈົ້າຄືພຣະຣາຊາປະເສນທິໂກສົນ ທ່ານຜູ້ຈະເລີນ ຂ້າພະເຈົ້າຄື ພຣະຣາຊາປະເສນທິໂກສົນ ທ່ານຜູ້ຈະເລີນ ຂ້າພະເຈົ້າຄືພຣະຣາຊາປະເສນທິໂກສົນ

ລຳດັບນັ້ນ ເມື່ອນັກບວດເຫຼົ່ານັ້ນຈາກໄປບໍ່ດົນ ພຣະເຈົ້າປະເສນທິໂກສົນສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພວກນັກບວດເຫຼົ່ານັ້ນຄົງເປັນພຣະອະຣະຫັນຫຼືທ່ານຜູ້ບັນລຸອະຣະຫັດຕະມັກເຫຼົ່າໃດເຫຼົ່າໜຶ່ງໃນໂລກເປັນແນ່

ພຣະຜູ້ມີພຣະພາກເຈົ້າຕັດວ່າ ມະຫາບໍພິດ ພຣະອົງເປັນຄະລຶຫັດ ເປັນການໂພຄີ ຄອບຄອງເຮືອນບັນທົມບຽດພຣະໂອຣົດແລະພຣະຊາຍາ ໃຊ້ສອຍພຣະພູສາແລະເຄື່ອງສຳອາງຈາກແຄວ້ນກາສີ ທັດຊົງດອກໄມ້ ຂອງຫອມ ແລະເຄື່ອງລູບທາ ຊົງຍິນດີເງິນແລະຄຳ ຍາກທີ່ຈະຊົງຮູ້ໄດ້ວ່າ ຄົນພວກນີ້ເປັນພຣະອະຣະຫັນ ຫຼືເປັນຜູ້ບັນລຸອະຣະຫັດຕະມັກ

ມະຫາບໍພິດ ສິນ ເພິ່ງຮູ້ໄດ້ດ້ວຍການຢູ່ຮ່ວມກັນ ແລະສິນນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ເພິ່ງຮູ້ໄດ້ໂດຍໃຊ້ເວລາເລັກໜ້ອຍ ຜູ້ໃສ່ໃຈຈຶ່ງຮູ້ໄດ້ ຜູ້ບໍ່ໃສ່ໃຈບໍ່ຮູ້ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ຂາດປັນຍາຮູ້ບໍ່ໄດ້

ມະຫາບໍພິດ ຄວາມສະອາດ[໑] ເພິ່ງຮູ້ໄດ້ດ້ວຍການເຈລະຈາ[໒] ແລະຄວາມສະອາດນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ເພິ່ງຮູ້ໄດ້ໂດຍໃຊ້ເວລາເລັກໜ້ອຍ ຜູ້ໃສ່ໃຈຈຶ່ງຮູ້ໄດ້ ຜູ້ບໍ່ໃສ່ໃຈຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ຂາດປັນຍາຮູ້ບໍ່ໄດ້

ມະຫາບໍພິດ ກຳລັງ໑ ເພິ່ງຮູ້ໄດ້ໃນເວລາມີອັນຕະລາຍ ແລະກຳລັງນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ ເວລາດົນ ບໍ່ເພິ່ງຮູ້ໄດ້ໂດຍໃຊ້ເວລາເລັກໜ້ອຍ ຜູ້ໃສ່ໃຈຈຶ່ງຮູ້ໄດ້ ຜູ້ບໍ່ໃສ່ໃຈຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ຂາດປັນຍາຮູ້ບໍ່ໄດ້

ມະຫາບໍພິດ ປັນຍາ ເພິ່ງຮູ້ໄດ້ດ້ວຍການສົນທະນາ ແລະປັນຍານັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ເພິ່ງຮູ້ໄດ້ໂດຍໃຊ້ເວລາເລັກໜ້ອຍ ຜູ້ໃສ່ໃຈຈຶ່ງຮູ້ໄດ້ ຜູ້ບໍ່ໃສ່ໃຈຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ຂາດປັນຍາຮູ້ບໍ່ໄດ້

ພຣະເຈົ້າປະເສນທິໂກສົນຂາບທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຕັດເລື້ອງນີ້ດີຍິ່ງວ່າ ມະຫາບໍພິດ ພຣະອົງເປັນຄະລືຫັດ ເປັນການໂພຄີ ຄອບຄອງເຮືອນບັນທົມບຽດພຣະໂອຣົດແລະພຣະມະເຫສີ ຊົງໃຊ້ສອຍພຣະພູສາ ແລະເຄື່ອງສຳອາງຈາກແຄວ້ນກາສີ ທັດຊົງດອກໄມ້ ຂອງຫອມ ແລະເຄື່ອງລູບທາ ຊົງຍິນດີເງິນ ແລະຄຳ ຍາກທີ່ຈະຊົງຮູ້ໄດ້ວ່າ ຄົນພວກນີ້ເປັນພຣະອະຣະຫັນ ຫຼືເປັນຜູ້ບັນລຸອະຣະຫັດຕະມັກ

ມະຫາບໍພິດ ສີນ ເພິ່ງຮູ້ໄດ້ດ້ວຍການຢູ່ຮ່ວມກັນ ແລະສີນນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ເພິ່ງຮູ້ໄດ້ໂດຍໃຊ້ເວລາເລັກໜ້ອຍ ຜູ້ໃສ່ໃຈຈຶ່ງຮູ້ໄດ້ ຜູ້ບໍ່ໃສ່ໃຈຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ຂາດປັນຍາຮູ້ບໍ່ໄດ້

ມະຫາບໍພິດ ຄວາມສະອາດ ເພິ່ງຮູ້ໄດ້ດ້ວຍເຈລະຈາ ແລະຄວາມສະອາດນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ເພິ່ງຮູ້ໄດ້ໂດຍໃຊ້ເວລາເລັກໜ້ອຍ ຜູ້ໃສ່ໃຈຈຶ່ງຮູ້ໄດ້ ຜູ້ບໍ່ໃສ່ໃຈຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ຂາດປັນຍາຮູ້ບໍ່ໄດ້

ມະຫາບໍພິດ ກຳລັງ ເພິ່ງຮູ້ໄດ້ໃນເວລາມີອັນຕະລາຍ ແລະກຳລັງນັ້ນແລເພິ່ງຮູ້ໄດ້ໂດຍໃຊ້ ເວລາດົນ ບໍ່ເພິ່ງຮູ້ໄດ້ໂດຍໃຊ້ເວລາເລັກໜ້ອຍ ຜູ້ໃສ່ໃຈຈຶ່ງຮູ້ໄດ້ ຜູ້ບໍ່ໃສ່ໃຈຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ຂາດປັນຍາຮູ້ບໍ່ໄດ້

ມະຫາບໍພິດ ປັນຍາເພິ່ງຮູ້ໄດ້ດ້ວຍການສົນທະນາ ແລະປັນຍານັ້ນແລເພິ່ງຮູ້ໄດ້ໂດຍໃຊ້ເວລາດົນ ບໍ່ເພິ່ງຮູ້ໄດ້ໂດຍໃຊ້ເວລາເລັກໜ້ອຍ ຜູ້ໃສ່ໃຈຈຶ່ງຮູ້ໄດ້ ຜູ້ບໍ່ໃສ່ໃຈຮູ້ບໍ່ໄດ້ ຜູ້ມີປັນຍາຈຶ່ງຮູ້ໄດ້ ຜູ້ຂາດປັນຍາຮູ້ບໍ່ໄດ້

ຂ້າແດ່ພຣະອົງຜູ້ຈະເລີນ ນັກບວດເຫຼົ່ານັ້ນ ເປັນຄົນຂອງຂ້າພຣະອົງ ເປັນບຸຣຸດສອດແນມ ເປັນສາຍລັບທ່ຽວສອດແນມໄປສູ່ຊົນນະບົດແລ້ວພາກັນກັບມາ ຂ້າພຣະອົງຈະຮູ້ເລື່ອງຫຼັງຈາກທີ່ຄົນເຫຼົ່ານັ້ນສືບມາ ບັດນີ້ ຄົນເຫຼົ່ານັ້ນຄົງຈະຊຳຣະລ້າງລະອອງທຸລີນັ້ນແລ້ວ ອາບສະອາດດີ ລູບທາຜິວດີແລ້ວ ຕັດຜົມແຖໜວດ ນຸ່ງຫົ່ມຜ້າຂາວ ເອີບອີ່ມ ພຽບພ້ອມດ້ວຍກາມມະຄຸນ ໕ ປົນເປີອົນຊີທັງຫຼາຍຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ**

ບັນພະຊິດບໍ່ເພິ່ງພະຍາຍາມໃນບາບກຳທັງປວງ
ບໍ່ເພິ່ງເປັນຄົນຂອງຜູ້ອື່ນ
ບໍ່ເພິ່ງອາໄສຜູ້ອື່ນເປັນຢູ່
ແລະບໍ່ເພິ່ງໃຊ້ທຳເປັນເຄື່ອງຄ້າຂາຍ[๑]

**ສັດຕະຊະຕິລະສູດທີ ໘ ຈົບ**

## ໙. ປັດຈະເວກຂະນະສູດ

### ວ່າດ້ວຍການພິຈາລະນາອະກຸສົນທຳແລະກຸສົນທຳ

[໕໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງພິຈາລະນາບາບອະກຸສົນທຳຈຳນວນຫຼາຍທີ່ພຣະອົງຊົງລະໄດ້ຂາດແລ້ວແລະກຸສົນທຳຈຳນວນຫຼາຍທີ່ພຣະອົງໃຫ້ເຖິງຄວາມຈະເລີນບໍລິບູນແລ້ວ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ບາບອະກຸສົນທຳຈຳນວນຫຼາຍທີ່ພຣະອົງຊົງລະໄດ້ຂາດແລ້ວ ແລະກຸສົນທຳຈຳນວນຫຼາຍທີ່ພຣະອົງໃຫ້ເຖິງຄວາມຈະເລີນບໍລິບູນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ**

ໃນການກ່ອນ ໝູ່ກິເລດໄດ້ມີແລ້ວ
ແຕ່ໃນການນັ້ນ ໝູ່ກິເລດບໍ່ມີ
ໃນການກ່ອນ ທຳອັນປາສະຈາກໂທດບໍ່ມີ
ແຕ່ໃນການນັ້ນ ທຳອັນປາສະຈາກໂທດໄດ້ມີແລ້ວ
ໃນອະດີດ ອະຣິຍະມັກບໍ່ມີ ໃນອະນາຄົດກໍຈັກບໍ່ມີ ແລະໃນປັດຈຸບັນກໍບໍ່ມີ[๑]

**ປັດຈະເວກຂະນະສູດທີ ໙ ຈົບ**

# ໔. ປະຖົມນານາຕິດຖິຍະສູດ

## ວ່າດ້ວຍລັດທິແຕກຕ່າງກັນສູດທີ ໑

[໕໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ສະມະນະພາມແລະປະຣິພາຊົກຈຳນວນຫຼາຍ ຜູ້ມີລັດທິແຕກຕ່າງກັນ ມີທິດຖິແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ມີຄວາມຖືກໃຈແຕກຕ່າງກັນ ຍຶດຖືທິດຖິແຕກຕ່າງກັນ ອາໄສຢູ່ໃນນະຄອນສາວັດຖີ ຄື

໑. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ໂລກ[໑]ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໒. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ໂລກບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໓. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ໂລກມີບ່ອນສຸດ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໔. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ໂລກບໍ່ມີບ່ອນສຸດ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໕. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ຊີວະ[໒] ກັບສະຣີຣະເປັນແນວດຽວກັນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໖. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ຊີວະກັບສະຣີຣະເປັນຄົນລະແນວກັນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໗. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ຫຼັງຈາກ ຕາຍແລ້ວ ຕະຖາຄົດ[໓]ເກີດອີກ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໘. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ຫຼັງຈາກ ຕາຍແລ້ວ ຕະຖາຄົດບໍ່ເກີດອີກ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໙. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ຫຼັງຈາກຕາຍ ແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໑໐. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ຫຼັງຈາກຕາຍ ແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ທີ່ ນັ້ນ ຈິງ ແນວອື່ນບໍ່ຈິງ

ສະມະນະພາມເຫຼົ່ານັ້ນເກີດການໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງ ກັນຢູ່ວ່າ ແນວນີ້ເປັນທຳ ແນວນີ້ບໍ່ແມ່ນທຳ ທຳຕ້ອງບໍ່ເປັນແນວນີ້ ທຳຕ້ອງເປັນແນວນີ້

ຄັ້ງນັ້ນແລ ໃນເວລາເຊົ້າ ພິກຂຸຈຳນວນຫຼາຍຄອງອັນຕະຣະວາສົກຖືບາດແລະຈີວອນ ເຂົ້າ ໄປບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນ ພຣະ ຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ສະມະນະພາມແລະປະ ຣິພາຊົກຈຳນວນຫຼາຍຜູ້ມີລັດທິແຕກຕ່າງກັນ ມີທິດຖິແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ມີ ຄວາມພໍໃຈແຕກຕ່າງກັນ ຢຶດຖືທິດຖິແຕກຕ່າງກັນ ອາໄສຢູ່ໃນນະຄອນສາວັດຖີ ຄື

໑. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ໂລກທ່ຽງ ນີ້ທີ່ ນັ້ນຈິງ ແນວອື່ນບໍ່ຈິງ

໒. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ໂລກບໍ່ທ່ຽງ ນີ້ທີ່ ນັ້ນຈິງ ແນວອື່ນບໍ່ຈິງ

໓. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ໂລກມີບ່ອນສຸດ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໔. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ໂລກບໍ່ມີບ່ອນ ສຸດ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໕. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ຊີວະກັບສະຣີ ຣະເປັນແນວດຽວກັນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໖. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ຊີວະກັບສະຣີ ຣະເປັນຄົນລະແນວກັນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໗. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໘. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໙. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໑໐. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ທໍ່ ນັ້ນຈິງ ແນວອື່ນບໍ່ຈິງ

ສະມະນະພາມເຫຼົ່ານັ້ນເກີດການໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ວ່າ ແນວນີ້ເປັນທໍາ ແນວນີ້ບໍ່ແມ່ນທໍາ ທໍາຕ້ອງບໍ່ເປັນແນວນີ້ ທໍາຕ້ອງເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອັນຍະເດຍຣະຖີປະຣິພາຊົກເປັນຄົນບອດບໍ່ມີຈັກຂຸ໌ ຈຶ່ງບໍ່ຮູ້ປະໂຫຍດ ບໍ່ຮູ້ສິ່ງທີ່ບໍ່ແມ່ນປະໂຫຍດ ບໍ່ຮູ້ທໍາ ບໍ່ຮູ້ສິ່ງທີ່ບໍ່ແມ່ນທໍາ ເມື່ອບໍ່ຮູ້ປະໂຫຍດ ບໍ່ຮູ້ສິ່ງທີ່ບໍ່ແມ່ນປະໂຫຍດ ບໍ່ຮູ້ທໍາ ບໍ່ຮູ້ສິ່ງທີ່ບໍ່ແມ່ນທໍາ ກໍເກີດການໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ວ່າ ແນວນີ້ເປັນທໍາ ແນວນີ້ບໍ່ແມ່ນທໍາ ທໍາຕ້ອງບໍ່ເປັນແນວນີ້ ທໍາຕ້ອງເປັນແນວນີ້

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ໃນນະຄອນສາວັດຖີນີ້ເອງ ມີພຣະຣາຊາພຣະອົງໜຶ່ງ ຮັບສັ່ງຮຽກບຸຣຸດຄົນໜຶ່ງມາຕັດວ່າ ທ້າວ ເຈົ້າຈົ່ງໄປ ຈົ່ງບອກໃຫ້ຄົນຕາບອດທັງໝົດໃນນະຄອນສາວັດຖີມາປະຊຸມຮ່ວມກັນ ບຸຣຸດນັ້ນທູນຮັບສະໜອງພຣະດໍາຣັດແລ້ວ ພາຄົນຕາບອດທັງໝົດໃນນະຄອນສາວັດຖີເຂົ້າໄປເຝົ້າພຣະຣາຊາຮອດບ່ອນຢູ່ ໄດ້ຂາບທູນພຣະຣາຊາດັ່ງນີ້ວ່າ ຂໍເດຊະ ຄົນຕາບອດທັງຫຼາຍໃນນະຄອນສາວັດຖີມາປະຊຸມກັນແລ້ວ ຂ້ານ້ອຍ ພຣະຣາຊາຕັດວ່າ ທ້າວ ຖ້າເປັນແນວນັ້ນ ເຈົ້າຈົ່ງສະແດງຊ້າງ໌ແກ່ຄົນຕາບອດທັງຫຼາຍເທີ້ນ ບຸຣຸດນັ້ນທູນຮັບສະໜອງພຣະດໍາຣັດແລ້ວຈຶ່ງສະແດງຊ້າງແກ່ຄົນຕາບອດທັງຫຼາຍ ຄື ສະແດງຫົວຊ້າງແກ່ຄົນຕາບອດພວກໜຶ່ງ ບອກວ່າ ທ່ານທັງຫຼາຍ ຊ້າງເປັນແນວນີ້ ສະແດງຫູຊ້າງແກ່ຄົນຕາບອດພວກໜຶ່ງ ບອກວ່າ ທ່ານທັງຫຼາຍ ຊ້າງເປັນແນວນີ້ ສະແດງງາຊ້າງແກ່ຄົນຕາບອດພວກໜຶ່ງ ບອກວ່າ ທ່ານທັງຫຼາຍ ຊ້າງເປັນແນວນີ້ ສະແດງງວງຊ້າງແກ່ຄົນ ຕາບອດພວກໜຶ່ງ ບອກວ່າ ທ່ານທັງຫຼາຍ ຊ້າງເປັນແນວນີ້ ສະແດງໂຕຊ້າງແກ່ຄົນຕາບອດພວກໜຶ່ງ ບອກວ່າ ທ່ານທັງຫຼາຍຊ້າງເປັນແນວນີ້ ສະແດງຕີນຊ້າງແກ່ຄົນຕາບອດພວກໜຶ່ງ ບອກວ່າ ທ່ານທັງຫຼາຍ ຊ້າງເປັນ

ແບບນີ້ ສະແດງລະຫວ່າງງາອ່ອນຊ້າງແກ່ຄົນຕາບອດພວກໜຶ່ງ ບອກວ່າ ທ່ານທັງຫຼາຍ ຊ້າງເປັນແບບນີ້ ສະແດງຫາງຊ້າງແກ່ຄົນຕາບອດພວກໜຶ່ງ ບອກວ່າ ທ່ານທັງຫຼາຍ ຊ້າງເປັນແບບນີ້ ສະແດງຂົນຫາງຊ້າງແກ່ຄົນຕາບອດພວກໜຶ່ງ ບອກວ່າ ທ່ານທັງຫຼາຍ ຊ້າງເປັນແບບນີ້ ພິກຂຸທັງຫຼາຍບຸຣຸດນັ້ນເມື່ອສະແດງຊ້າງແກ່ຄົນຕາບອດທັງຫຼາຍແລ້ວ ໄດ້ເຂົ້າເຝົ້າພຣະຣາຊາພຣະອົງນັ້ນຮອດບ່ອນຢູ່ແລ້ວຂາບທູນດັ່ງນີ້ວ່າ ຂໍເດຊະ ຄົນຕາບອດທັງຫຼາຍເຫັນຊ້າງແລ້ວ໌ ຂ້ານ້ອຍ ຂໍພຣະອົງຈົ່ງຊົງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ

ພິກຂຸທັງຫຼາຍ ລຳດັບນັ້ນ ພຣະຣາຊາພຣະອົງນັ້ນໄດ້ສະເດັດໄປຫາຄົນຕາບອດເຫຼົ່ານັ້ນ ໄດ້ຕັດກັບຄົນຕາບອດທັງຫຼາຍດັ່ງນີ້ວ່າ ທ່ານທັງຫຼາຍ ພວກທ່ານເຫັນຊ້າງແລ້ວບໍ?

ຄົນຕາບອດເຫຼົ່ານັ້ນ ຂາບທູນວ່າ ຂໍເດຊະ ຂ້າພຣະອົງທັງຫຼາຍເຫັນແລ້ວ ຂ້ານ້ອຍ

ພຣະຣາຊາຕັດວ່າ ທ່ານທັງຫຼາຍ ພວກທ່ານກ່າວວ່າ ຂ້າພຣະອົງທັງຫຼາຍ ເຫັນຊ້າງແລ້ວ ຊ້າງເປັນແບບໃດ?

| | | |
|---|---|---|
| ຄົນຕາບອດພວກທີ່ຄຳ ຫົວ | ຊ້າງຂາບທູນແບບນີ້ ວ່າ ຊ້າງມີຮູບຮ່າງຄືໝໍ້ | ຂ້ານ້ອຍ |
| ຯລຯ ຫູ | ຊ້າງຂາບທູນແບບນີ້ວ່າ ຊ້າງມີຮູບຮ່າງຄື ກະດົ້ງ | ຂ້ານ້ອຍ |
| ຯລຯ ງາ | ຊ້າງຂາບທູນແບບນີ້ວ່າ ຊ້າງມີຮູບຮ່າງຄື ຕໍໄມ້ | ຂ້ານ້ອຍ |
| ຯລຯ ງວງ | ຊ້າງຂາບທູນແບບນີ້ວ່າ ຊ້າງມີຮູບຮ່າງຄື ງອນໄຖ | ຂ້ານ້ອຍ |
| ຯລຯ ໂຕ | ຊ້າງຂາບທູນແບບນີ້ວ່າ ຊ້າງມີຮູບຮ່າງຄື ທຍຸ້ງເຂົ້າ | ຂ້ານ້ອຍ |
| ຯລຯ ຕີນ | ຊ້າງຂາບທູນແບບນີ້ວ່າ ຊ້າງມີຮູບຮ່າງຄື ເສົາ | ຂ້ານ້ອຍ |
| ຯລຯ ຂາອ່ອນ | ຊ້າງຂາບທູນແບບນີ້ວ່າ ຊ້າງມີຮູບຮ່າງຄື ຄົກ | ຂ້ານ້ອຍ |
| ຯລຯ ຫາງ | ຊ້າງຂາບທູນແບບນີ້ວ່າ ຊ້າງມີຮູບຮ່າງຄື ສາກຕຳເຂົ້າ | ຂ້ານ້ອຍ |
| ຯລຯ ຂົນຫາງ | ຊ້າງຂາບທູນແບບນີ້ວ່າ ຊ້າງມີຮູບຮ່າງຄື ໄມ້ກວາດ | ຂ້ານ້ອຍ |

ພິກຂຸທັງຫຼາຍ ຄົນຕາບອດເຫຼົ່ານັ້ນຕ່າງກຳໝັດທຸ່ມຖຽງກັນວ່າ ແບບນີ້ຄືຊ້າງ ແບບນີ້ບໍ່ແມ່ນຊ້າງ ຊ້າງຕ້ອງບໍ່ເປັນແບບນີ້ ຊ້າງຕ້ອງເປັນແບບນີ້ ພິກຂຸທັງຫຼາຍ ພຣະຣາຊາພຣະອົງນັ້ນຈຶ່ງຊົງພໍພຣະທະໄທ ດ້ວຍເຫດນັ້ນ

ພິກຂຸທັງຫຼາຍ ອັນຍະເດຍຣະຖີປະຣິພາຊົກເປັນຄົນບອດ ບໍ່ມີຈັກຂຸ ຈຶ່ງບໍ່ຮູ້ປະໂຫຍດ ບໍ່ຮູ້ສິ່ງທີ່ບໍ່ແມ່ນປະໂຫຍດ ບໍ່ຮູ້ທຳ ບໍ່ຮູ້ສິ່ງທີ່ບໍ່ແມ່ນທຳ ເມື່ອບໍ່ຮູ້ປະໂຫຍດ ບໍ່ຮູ້ສິ່ງທີ່ບໍ່ແມ່ນປະໂຫຍດ ບໍ່ຮູ້ທຳ ບໍ່ຮູ້ສິ່ງທີ່ບໍ່ແມ່ນທຳ ກໍເກີດການໝາງໃຈກັນ ຜິດກັນ ຖຽງກັນໃຊ້ຫອກຄືປາກສຽບແທງກັນຢູ່ວ່າ ແບບນີ້ເປັນທຳ ແບບນີ້ບໍ່ແມ່ນທຳ ທຳຕ້ອງບໍ່ເປັນແບບນີ້ ທຳຕ້ອງເປັນແບບນີ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນ ວ່າ

**ພຸດທະອຸທານ**

ຮູ້ວ່າ ສະມະນະພາມພວກໜຶ່ງ
ຢຶດຕິດຢູ່ໃນທິດຖິຫຼືອຸປາທານຂັ້ນເຫຼົ່ານີ້
ຈຶ່ງກ່າວໂຕ້ຖຽງຜິດຖຽງກັນ
ຄືຄົນຕາບອດທີ່ຄຳຊ້າງແຕ່ລະສ່ວນ ສັນນັ້ນ

**ປະຖົມນານາຕິດຖິຍະສູດທີ ໔ ຈົບ**

# ໕. ທຸຕິຍະນານາຕິດຖິຍະສູດ

## ວ່າດ້ວຍລັດທິແຕກຕ່າງກັນ ສູດທີ ໔

[໕໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ສະມະນະພາມແລະປະຣິພາຊົກຈຳນວນຫຼາຍ ຜູ້ມີລັດທິແຕກຕ່າງກັນ ມີທິດຖິແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ມີຄວາມຖືກໃຈແຕກຕ່າງກັນ ຢຶດຖືທິດຖິແຕກຕ່າງກັນ ອາໄສຢູ່ໃນນະຄອນສາວັດຖີ ຄື

໑. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກ°ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໒. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກບໍ່ທ່ຽງ໌ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໓. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກທ່ຽງແລະບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໔. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກຈະວ່າທ່ຽງກໍບໍ່ແມ່ນ ຈະວ່າບໍ່ທ່ຽງກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໕. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກ ຕົນເອງເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໖. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກ ຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໗. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາ ແລະ ໂລກ ຕົນເອງເປັນໂຕການແລະຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໘. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກເກີດຂຶ້ນໄດ້ເອງ ຕົນເອງເປັນໂຕການກໍບໍ່ແມ່ນ ຜູ້ອື່ນເປັນໂຕການກໍບໍ່ ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໙. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກມີທັງສຸກແລະທຸກ ໝັ້ນຍືນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໑໐. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກມີທັງສຸກແລະທຸກ ບໍ່ໝັ້ນຍືນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໑໑. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກມີທັງສຸກແລະທຸກ ໝັ້ນຍືນກໍແມ່ນ ບໍ່ໝັ້ນຍືນກໍແມ່ນ ນີ້ທໍ່ນັ້ນຈິງ ແນວ ອື່ນບໍ່ຈິງ

໑໒. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກມີທັງສຸກແລະທຸກ ຈະວ່າໝັ້ນຍືນກໍບໍ່ແມ່ນ ຈະວ່າບໍ່ໝັ້ນຍືນກໍບໍ່ແມ່ນ ນີ້ທໍ່ ນັ້ນຈິງ ແນວອື່ນບໍ່ຈິງ

໑໓. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກມີທັງສຸກແລະທຸກ ຕົນເອງເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນ ບໍ່ຈິງ

໑໔. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກມີທັງສຸກແລະທຸກ ຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໑໕. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກມີທັງສຸກແລະທຸກ ຕົນເອງເປັນໂຕການແລະຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນ ຈິງ ແນວອື່ນບໍ່ຈິງ

໑໖. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກມີທັງສຸກແລະທຸກ ເກີດຂຶ້ນໄດ້ເອງ ຕົນເອງເປັນໂຕການກໍບໍ່ແມ່ນ ຜູ້ອື່ນເປັນໂຕການກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

ສະມະນະພາມເຫຼົ່ານັ້ນເກີດການໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄື ປາກສຽບແທງກັນຢູ່ວ່າ ແນວນີ້ເປັນທຳ ແນວນີ້ບໍ່ແມ່ນທຳ ທຳຕ້ອງບໍ່ເປັນແນວນີ້ ທຳຕ້ອງເປັນແນວນີ້

ຄັ້ງນັ້ນແລ ໃນເວລາເຊົ້າ ພິກຂຸຈຳນວນຫຼາຍຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາສ ສະມະນະພາມແລະປະຣິພາຊົກຈຳນວນຫຼາຍຜູ້ມີລັດທິແຕກຕ່າງກັນ ມີທິດຖິແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ຢຶດຖືທິດຖິແຕກຕ່າງກັນ ອາໄສຢູ່ໃນນະຄອນສາວັດຖີ ຄື

໑. ສະມະນະພາມພວກໜຶ່ງ ມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

ฯລฯ

໑໖. ສະມະນະພາມພວກໜຶ່ງ ฯລฯ

ສະມະນະພາມເຫຼົ່ານັ້ນເກີດການໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ວ່າ ແນວນີ້ເປັນທຳ ແນວນີ້ບໍ່ແມ່ນທຳ ທຳຕ້ອງບໍ່ເປັນແນວນີ້ ທຳຕ້ອງເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອັນຍະເດຍຣະຖີປະຣິພາຊົກເປັນຄົນບອດບໍ່ມີຈັກຂຸ ຈຶ່ງບໍ່ຮູ້ປະໂຫຍດ ບໍ່ຮູ້ສິ່ງທີ່ບໍ່ແມ່ນປະໂຫຍດ ບໍ່ຮູ້ທຳ ບໍ່ຮູ້ສິ່ງທີ່ບໍ່ແມ່ນທຳ ເມື່ອບໍ່ຮູ້ປະໂຫຍດ ບໍ່ຮູ້ສິ່ງທີ່ບໍ່ແມ່ນປະໂຫຍດ ບໍ່ຮູ້ທຳ ບໍ່ຮູ້ສິ່ງທີ່ບໍ່ແມ່ນທຳ ກໍເກີດການໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ວ່າ ແນວນີ້ເປັນທຳ ແນວນີ້ບໍ່ແມ່ນທຳ ທຳຕ້ອງບໍ່ເປັນແນວນີ້ ທຳຕ້ອງເປັນແນວນີ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນ ວ່າ

**ພຸດທະອຸທານ**

ຮູ້ວ່າ ສະມະນະພາມພວກໜຶ່ງ<br>
ຢຶດຕິດຢູ່ໃນທິດຖິຫຼືອຸປາທານຂັນເຫຼົ່ານີ້

ຈຶ່ງບໍ່ບັນລຸນິບພານຫຼືອະຣິຍະມັກ
ມົວຈົມຢູ່ໃນລະຫວ່າງທາງນັ້ນເອງ໑

**ທຸຕິຍະນານາຕິດຖິຍະສູດທີ ໕ ຈົບ**

## ໖. ຕະຕິຍະນານາຕິດຖິຍະສູດ
## ວ່າດ້ວຍລັດທິແຕກຕ່າງກັນ ສູດທີ ໖

[໕໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ສະມະນະພາມແລະປະຣິພາຊົກຈຳນວນຫຼາຍ ຜູ້ມີລັດທິແຕກຕ່າງກັນ ມີທິດຖິແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ມີຄວາມຖືກໃຈແຕກຕ່າງກັນ ຍຶດຖືທິດຖິແຕກຕ່າງກັນ ອາໄສຢູ່ໃນນະຄອນສາວັດຖີ ຄື

໑. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໒. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໓. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກທ່ຽງແລະບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໔. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກຈະວ່າທ່ຽງກໍບໍ່ແມ່ນ ຈະວ່າບໍ່ທ່ຽງກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໕. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກ ຕົນເອງເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໖. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກ ຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ

໗. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາ ແລະໂລກ ຕົນເອງເປັນໂຕການແລະຜູ້ອື່ນເປັນໂຕການ ນີ້ທໍ່ນັ້ນຈິງ ແນວອື່ນ ບໍ່ຈິງ

໗. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກເກີດຂຶ້ນໄດ້ເອງ ຕົນເອງເປັນໂຕການກໍບໍ່ແມ່ນ ຜູ້ອື່ນເປັນໂຕການກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໙. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກມີທັງສຸກແລະທຸກ ໝັ້ນຍືນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໑໐. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາ ແລະໂລກມີທັງສຸກແລະທຸກ ບໍ່ໝັ້ນຍືນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໑໑. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາ ແລະໂລກມີທັງສຸກແລະທຸກ ໝັ້ນຍືນກໍແມ່ນ ບໍ່ໝັ້ນຍືນກໍແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໑໒. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກຈະວ່າໝັ້ນຍືນກໍບໍ່ແມ່ນ ຈະວ່າບໍ່ໝັ້ນຍືນກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໑໓. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາ ແລະໂລກມີທັງສຸກແລະທຸກ ຕົນເອງເປັນໂຕການ ນີ້ທີ່ນັ້ນຈິງ ແນວອື່ນ ບໍ່ຈິງ

໑໔. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກມີທັງສຸກແລະທຸກ ຜູ້ອື່ນເປັນໂຕການ ນີ້ທີ່ນັ້ນຈິງ ແນວອື່ນ ບໍ່ຈິງ

໑໕. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກມີທັງສຸກແລະທຸກ ຕົນເອງເປັນໂຕການ ແລະຜູ້ອື່ນເປັນໂຕການ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໑໖. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາ ແລະໂລກມີທັງສຸກແລະທຸກ ເກີດຂຶ້ນໄດ້ເອງ ຕົນເອງເປັນໂຕການກໍບໍ່ແມ່ນ ຜູ້ອື່ນເປັນໂຕການກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

ສະມະນະພາມເຫຼົ່ານັ້ນເກີດການໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄື ປາກສຽບແທງກັນຢູ່ວ່າ ແນວນີ້ເປັນທຳ ແນວນີ້ບໍ່ແມ່ນທຳ ທຳຕ້ອງບໍ່ເປັນແນວນີ້ ທຳຕ້ອງເປັນແນວນີ້

ຄັ້ງນັ້ນແລ ໃນເວລາເຊົ້າ ພິກຂຸຈຳນວນຫຼາຍຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປ ບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນໄດ້ຂາບທູນພຣະຜູ້ມີ ພຣະພາກດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດສະມະນະພາມ ແລະ ປະຣິພາຊົກຈຳນວນຫຼາຍຜູ້ມີລັດທິແຕກຕ່າງກັນ ມີທິດຖິແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ມີຄວາມຖືກໃຈແຕກຕ່າງກັນ ຍຶດຖືທິດຖິແຕກຕ່າງກັນ ອາໄສຢູ່ໃນນະຄອນສາວັດຖີ ຄື

໑. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໒. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກບໍ່ທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໓. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກທ່ຽງແລະບໍ່ທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໔. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກຈະວ່າທ່ຽງກໍບໍ່ແມ່ນ ຈະວ່າບໍ່ທ່ຽງກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໕. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກ ຕົນເອງເປັນໂຕການ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໖. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກ ຜູ້ອື່ນເປັນໂຕການ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໗. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາ ແລະໂລກຕົນເອງເປັນໂຕການແລະຜູ້ອື່ນເປັນໂຕການ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໘. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກເກີດຂຶ້ນໄດ້ເອງ ຕົນເອງເປັນໂຕການກໍບໍ່ແມ່ນ ຜູ້ອື່ນເປັນໂຕການກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໙. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະໂລກມີທັງສຸກແລະທຸກ ໝັ້ນຍືນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໑໐. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາ ແລະ ໂລກມີທັງສຸກແລະທຸກ ບໍ່ໝັ້ນຍືນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໑໑. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາ ແລະ ໂລກມີທັງສຸກແລະທຸກ ໝັ້ນຍືນກໍແມ່ນ ບໍ່ໝັ້ນຍືນກໍແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໑໒. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກຈະວ່າໝັ້ນຍືນກໍບໍ່ແມ່ນ ຈະວ່າບໍ່ໝັ້ນຍືນກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໑໓. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກມີທັງສຸກແລະທຸກ ຕົນເອງເປັນໂຕການ ນີ້ທີ່ນັ້ນຈິງ ແນວອື່ນ ບໍ່ຈິງ

໑໔. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກມີທັງສຸກແລະທຸກ ຜູ້ອື່ນເປັນໂຕການ ນີ້ທີ່ນັ້ນຈິງ ແນວອື່ນ ບໍ່ຈິງ

໑໕. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາແລະ ໂລກມີທັງສຸກແລະທຸກ ຕົນເອງເປັນໂຕການ ແລະຜູ້ອື່ນເປັນໂຕການ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

໑໖. ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ອັດຕາ ແລະ ໂລກມີທັງສຸກແລະທຸກ ເກີດຂຶ້ນໄດ້ເອງ ຕົນເອງເປັນໂຕການກໍບໍ່ແມ່ນ ຜູ້ອື່ນເປັນໂຕການກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ

ສະມະນະພາມເຫຼົ່ານັ້ນເກີດການໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ວ່າ ແນວນີ້ເປັນທຳ ແນວນີ້ບໍ່ແມ່ນທຳ ທຳຕ້ອງບໍ່ເປັນແນວນີ້ ທຳຕ້ອງເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອັນຍະເດຍຣະຖີປະຣິພາຊົກເປັນຄົນບອດ ບໍ່ມີຈັກຂຸ ຈຶ່ງບໍ່ຮູ້ປະໂຫຍດ ບໍ່ຮູ້ສິ່ງທີ່ບໍ່ແມ່ນປະໂຫຍດ ບໍ່ຮູ້ທຳ ບໍ່ຮູ້ສິ່ງທີ່ບໍ່ແມ່ນທຳ ເມື່ອບໍ່ຮູ້ປະໂຫຍດ ບໍ່ຮູ້ສິ່ງທີ່ບໍ່ແມ່ນປະໂຫຍດ ບໍ່ຮູ້ທຳ ບໍ່ຮູ້ສິ່ງທີ່ບໍ່ແມ່ນທຳ ກໍເກີດການ ບາດໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ວ່າ ແນວນີ້ເປັນທຳ ແນວນີ້ບໍ່ແມ່ນທຳ ທຳຕ້ອງບໍ່ເປັນແນວນີ້ ທຳຕ້ອງເປັນແນວນີ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ

ໝູ່ສັດນີ້ ຄືພວກທີ່ຖືທິດຖິວ່າ ເຮົາເປັນໂຕການ[១]
ພວກທີ່ຖືທິດຖິວ່າ ຜູ້ອື່ນເປັນໂຕການ
ແລະສະມະນະພາມພວກໜຶ່ງທີ່ບໍ່ຄວນຕາມທິດຖິທັງສອງນີ້[៤]
ບໍ່ເຫັນທິດຖິນັ້ນວ່າ ເປັນຄືລູກສອນ
ແຕ່ສຳລັບຜູ້ໃຊ້ປັນຍາພິຈາລະນາຈົນຮູ້ແຈ້ງວ່າ
ທິດຖິນັ້ນເປັນຄືລູກສອນ
ຍ່ອມບໍ່ມີທິດຖິທີ່ວ່າ ເຮົາສ້າງ
ຍ່ອມບໍ່ມີທິດຖິທີ່ວ່າ ຜູ້ອື່ນສ້າງ
ໝູ່ສັດນີ້ມີມານະ ຖືກມານະຮ້ອຍຮັດ
ຖືກມານະຜູກພັນໄວ້ ມັກກ່າວຖົກຖຽງກັນໃນເລື້ອງທິດຖິ
ຈຶ່ງບໍ່ລ່ວງພົ້ນສັງສາຣະວັດໄປໄດ້

**ຕະຕິຍະນານາຕິດຖິຍະສູດທີ ໖ ຈົບ**

# ໗. ສຸພູຕິສູດ

## ວ່າດ້ວຍພຣະສຸພູຕິເຖຣະ

[໕໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະສຸພູຕິນັ່ງຄູ້ບັນລັງ ຕັ້ງກາຍກົງ ເຂົ້າສະມາທິທີ່ບໍ່ມີວິຕົກ[១]ຢູ່ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະສຸພູຕິຜູ້ກຳລັງນັ່ງຄູ້ບັນລັງ ຕັ້ງກາຍກົງ ເຂົ້າສະມາທິທີ່ບໍ່ມີວິຕົກຢູ່ໃນບ່ອນບໍ່ໄກ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ

ຜູ້ກຳຈັດວິຕົກທັງຫຼາຍໄດ້
ກຳນົດວິຕົກທຸກຢ່າງທີ່ເກີດພາຍໃນຕົນໄດ້ດ້ວຍດີ
ລ່ວງພົ້ນກິເລດເຄື່ອງຂ້ອງ[໒]ໄດ້ ເປັນຜູ້ມີອະຣູປະສັນຍາ[໓]
ລະໂຍຄະ ໔ ປະການ[໔] ໄດ້ຢ່າງໝົດສິ້ນແລ້ວ
ບໍ່ຕ້ອງຫວນກັບມາເກີດອີກຕໍ່ໄປ

**ສຸພູຕິສູດທີ ໗ ຈົບ**

## ໘. ຄະນິກາສູດ
## ວ່າດ້ວຍຍິງໂສເພນີ

[໕໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເວລຸວັນ ກະລັນທະກະນິວາປະສະຖານ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ໃນນະຄອນຣາດຊະຄຶ ມີນັກເລງ ໒ ພວກມີຈິດປະຕິພັດທ໌ຍິນດີໃນຍິງໂສເພນີຄົນໜຶ່ງ ເກີດການໝາງໃຈກັນ ຜິດກັນ ຖຽງກັນ ເຖິງຂັ້ນ ຕ່ອຍຕີກັນແດ່ ໃຊ້ກ້ອນດິນດຶກກັນແດ່ ໃຊ້ໄມ້ຄ້ອນຕີກັນແດ່ ໃຊ້ອາວຸດທຳຮ້າຍກັນແດ່ ນັກເລງເຫຼົ່ານັ້ນເຖິງແກ່ຄວາມຕາຍໃນບ່ອນນັ້ນແດ່ ໄດ້ຮັບທຸກປາງຕາຍແດ່

ຄັ້ງນັ້ນ ໃນເວລາເຊົ້າ ພິກຂຸຈຳນວນຫຼາຍຄອງອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງຣາດຊະຄຶ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ໃນນະຄອນຣາດຊະຄຶ ມີນັກເລງ ໒ ພວກມີຈິດປະຕິພັດ ຍິນດີໃນຍິງໂສເພນີຄົນໜຶ່ງເກີດການໝາງໃຈກັນ ຜິດກັນ ຖຽງກັນ ເຖິງຂັ້ນ ຕ່ອຍຕີກັນແດ່ ໃຊ້ກ້ອນດິນດຶກກັນແດ່ ໃຊ້ໄມ້ຄ້ອນຕີກັນແດ່ ໃຊ້ອາວຸດທຳຮ້າຍກັນແດ່ ນັກເລງເຫຼົ່ານັ້ນເຖິງແກ່ຄວາມຕາຍໃນບ່ອນນັ້ນແດ່ ໄດ້ຮັບທຸກປາງຕາຍແດ່ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ[໑] ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

**ພຸດທະອຸທານ**

ສິ່ງທີ່ບຸກຄົນໄດ້ຮັບຢູ່ແລະສິ່ງທີ່ບຸກຄົນຍັງຫວັງທີ່ຈະໄດ້ຮັບຕໍ່ໄປ[໑]
ສິ່ງທັງສອງນັ້ນໃສ່ດ້ວຍທຸລີຄືຣາຄະເປັນຕົ້ນແກ່ຜູ້ທຸຣົນທຸຣາຍໃຝ່ໃຈຍາກໄດ້ຮັບຢູ່
ສະມະນະພາມຜູ້ມີສິກຂາອັນເປັນສາຣະ
ຄືສີນ ຂໍ້ວັດປະຕິບັດ ຊີວິດ ພົມມະຈັນ ແລະການບວງສວງອັນເປັນສາຣະ[໒]
ນີ້ເປັນສ່ວນສຸດທີ ໑
ສະມະນະພາມຜູ້ມີວາທະແນວນີ້ວ່າ
ໂທດໃນການບໍ່ມີ ນີ້ເປັນສ່ວນສຸດທີ ໒
ສ່ວນສຸດທັງສອງນີ້ ມີແຕ່ຈະເພີ່ມຕັນຫາແລະອະວິດຊາໃຫ້ຫຼາຍຂຶ້ນ
ຕັນຫາແລະອະວິດຊາຍ່ອມກໍ່ໃຫ້ເກີດຄວາມເຫັນຜິດຫຼາຍຂຶ້ນ
ສະມະນະພາມທັງຫຼາຍບໍ່ຮູ້ສ່ວນສຸດທັງສອງນັ້ນ
ລາງພວກກໍຈົມຕິດຢູ່ ລາງພວກກໍແລ່ນໄປ[໓]
ສ່ວນພຣະອະຣິຍະທັງຫຼາຍໄດ້ຮູ້ແຈ້ງສ່ວນສຸດທັງສອງນັ້ນ
ຈຶ່ງບໍ່ຕົກໄປໃນສ່ວນສຸດທັງສອງນັ້ນ
ແລະຍ້ອນລະສ່ວນສຸດທັງສອງນັ້ນໄດ້
ຈຶ່ງບໍ່ສຳຄັນຕົນດ້ວຍຕັນຫາ ທິດຖິ ແລະມານະ
ຍ່ອມບໍ່ມີວັດຕະຜາກົດ[໔]

**ຄະນິກາສູດທີ ໗ ຈົບ**

## ໘. ອຸປາຕິທາວັນຕິສູດ

## ວ່າດ້ວຍແມງບິນເຂົ້າໄຟ

[໕໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ໃນຄວາມມືດມິດແຫ່ງຣາຕີ ພຣະຜູ້ມີພຣະພາກເຈົ້າປະທັບ ນັ່ງຢູ່ກາງແຈ້ງ ມີປະທີບນ້ຳມັນລຸກຮຸ່ງຢູ່

ຂະນະນັ້ນ ແມງຈຳນວນຫຼາຍຕົກລົງຮອບ ໆ ທີ່ປະທີບນ້ຳມັນເຫຼົ່ານັ້ນເຖິງຄວາມທຸກ ຄວາມພິນາດຍ່ອຍຍັບ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນແມງຈຳນວນຫຼາຍຕົກລົງຮອບ ໆ ທີ່ປະທີບ ນ້ຳມັນເຫຼົ່ານັ້ນ ເຖິງຄວາມທຸກ ຄວາມພິນາດຍ່ອຍຍັບ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນ ວ່າ

**ພຸດທະອຸທານ**

ສະມະນະພາມພວກໜຶ່ງແລ່ນເລີຍໄປ[๑]
ບໍ່ບັນລຸທຳທີ່ເປັນສາຣະ[๒]
ຊື່ວ່າພອກພູນເຄື່ອງພັນທະນາການ[๓]ໃໝ່ ໆ ຍິ່ງຂຶ້ນ
ຍຶດໝັ້ນໃນສິ່ງທີ່ຕົນໄດ້ເຫັນແລ້ວແລະຟັງແລ້ວແນວນີ້
ຈຶ່ງຕົກສູ່ຂຸມຖ່ານໄຟ[๔]ຕະຫຼອດໄປ
ຄືແມງຕົກລົງສູ່ປະທີບນ້ຳມັນສັນນັ້ນ

**ອຸປາຕິທາວັນຕິສູດທີ ໙ ຈົບ**

# ໑໐. ອຸປະປັດຊັນຕິສູດ

## ວ່າດ້ວຍແສງທີ່ງຫ້ອຍກັບແສງອາທິດ

[໖໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນຍະເດຍຣະຖີປະຣິພາຊົກເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານຕາບເທົ່າທີ່ພຣະຕະຖາຄົດ ອະຣະຫັນຕະສຳມາສຳພຸດທະເຈົ້າ ຍັງບໍ່ສະເດັດອຸບັດຂຶ້ນໃນໂລກ ແຕ່ພໍພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກແລ້ວ ອັນຍະເດຍຣະຖີປະຣິພາຊົກກໍເປັນຜູ້ທີ່ມະຫາຊົນ ບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ບໍ່ນອບນ້ອມ ບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ບັດນີ້ ພຣະຜູ້ມີພຣະພາກເຈົ້າແລະພິກຂຸສົງເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຈິງແນວນັ້ນ ອານົນ ອັນຍະເດຍຣະຖີປະຣິພາຊົກເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະ ປັດໄຈເພສັດບໍຣິຂານຕາບເທົ່າທີ່ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າຍັງບໍ່ອຸບັດຂຶ້ນໃນໂລກ ແຕ່ພໍຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າອຸບັດຂຶ້ນໃນໂລກແລ້ວ ອັນຍະເດຍຣະຖີປະຣິພາຊົກກໍເປັນຜູ້ທີ່ມະຫາຊົນບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ບໍ່ນອບນ້ອມ ບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ບັດນີ້ ຕະຖາຄົດແລະພິກຂຸສົງ ເປັນຜູ້ທີ່ມະຫາຊົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ໄດ້ຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

**ພຸດທະອຸທານ**

ທີ່ງຫ້ອຍນັ້ນສ່ອງສະຫວ່າງຢູ່ໄດ້ຊົ່ວເວລາດວງອາທິດຍັງບໍ່ຂຶ້ນ
ເມື່ອດວງອາທິດຂຶ້ນແລ້ວ ກໍອັບແສງແລະບໍ່ສ່ອງສະຫວ່າງໄດ້ເລີຍ
ອັນຍະເດຍຣະຖີກໍຄືກັນ ຮຸ່ງເຮືອງຢູ່ໄດ້
ຊົ່ວເວລາທີ່ພຣະສຳມາສຳພຸດທະເຈົ້າຍັງບໍ່ອຸບັດຂຶ້ນໃນໂລກ
ແຕ່ເມື່ອໃດ ພຣະສຳມາສຳພຸດທະເຈົ້າອຸບັດຂຶ້ນໃນໂລກ
ເມື່ອນັ້ນ ອັນຍະເດຍຣະຖີພ້ອມທັງສານຸສິດກໍອັບເສົາ
ໝົດຄວາມຮຸ່ງເຮືອງອີກຕໍ່ໄປ
ພວກເຂົາມີຄວາມເຫັນຜິດ ຈຶ່ງບໍ່ພົ້ນຈາກທຸກໄປໄດ້

**ອຸປະປັດຊັນຕິສູດທີ ໑໐ ຈົບ**

**ຊັດຈັນທະວັກທີ ໖ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອາຍຸສັງຂາໂຣສະສັດຊະນະສູດ
໒. ປັດຈະເວກຂະນະສູດ
໓. ທຸຕິຍະນານາຕິດຖີຍະສູດ
໗. ສຸພູຕິສູດ
໙. ອຸປາຕິທາວັນຕິສູດ
໔. ສັດຕະຊະຕິລະສູດ
໕. ປະຖົມນານາຕິດຖີຍະສູດ
໖. ຕະຕິຍະນານາຕິດຖີຍະສູດ
໘. ຄະນິກາສູດ
໑໐. ອຸປະປັດຊັນຕິສູດ

# ໗. ຈູລະວັກ

## ໝວດວ່າດ້ວຍເລື້ອງເລັກໜ້ອຍ

## ໑. ປະຖົມລະກຸນຕະກະພັດທິຍະສູດ

### ວ່າດ້ວຍພຣະລະກຸນຕະກະພັດທິຍະເຖຣະ ສູດທີ ໑

[໖໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະສາຣີບຸດຊີ້ແຈ່ງໃຫ້ທ່ານພຣະລະກຸນຕະກະພັດທິຍະ[໑]ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຣວຍຣຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາໂດຍວິທີຕ່າງ ໆ[໒] ຈິດຂອງທ່ານພຣະລະກຸນຕະກະພັດທິຍະລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ[໓]

ພຣະຜູ້ມີພຣະພາກເຈົ້າ ໄດ້ທອດພຣະເນດເຫັນທ່ານພຣະສາຣີບຸດຊີ້ແຈ່ງໃຫ້ທ່ານພຣະລະກຸນຕະກະພັດທິຍະເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຣວຍຣຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາໂດຍວິທີຕ່າງ ໆ ຈິດຂອງທ່ານພຣະລະກຸນຕະກະພັດທິຍະລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນ ວ່າ

### ພຸດທະອຸທານ

ບຸກຄົນລຸດພົ້ນແລ້ວໃນທຳທັງປວງທັງຊັ້ນສູງແລະຊັ້ນຕ່ຳ[໑]
ບໍ່ຫຼົງເຂົ້າໃຈວ່າ ນີ້ເປັນຂອງເຮົາ ນີ້ເປັນໂຕເຮົາ
ມີຈິດລຸດພົ້ນໄດ້ເດັດຂາດແນວນີ້
ຊື່ວ່າຂ້າມພົ້ນໂອຄະ[໒] ທີ່ຕົນຍັງບໍ່ເຄີຍຂ້າມໄດ້
ບໍ່ຕ້ອງມີພົບໃໝ່ອີກ

**ປະຖົມລະກຸນຕະກະພັດທິຍະສູດທີ ໑ ຈົບ**

# ໘. ທຸຕິຍະລະກຸນຕະກະພັດທິຍະສູດ

## ວ່າດ້ວຍພຣະລະກຸນຕະກະພັດທິຍະເຖຣະ ສູດທີ ໘

[໗໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະສາຣີບຸດສຳຄັນທ່ານພຣະລະກຸນຕະກະພັດທິຍະວ່າເປັນພຣະເສຂະ ຈຶ່ງຊີ້ແຈ່ງໃຫ້ທ່ານພຣະລະກຸນຕະກະພັດທິຍະເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສ ດ້ວຍທຳມີກະຖາໂດຍວິທີຕ່າງ ໆ ຍິ່ງກວ່າປະມານ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະສາຣີບຸດຜູ້ສຳຄັນທ່ານພຣະລະກຸນຕະກະພັດທິຍະວ່າເປັນພຣະເສຂະ ຈຶ່ງຊີ້ແຈ່ງໃຫ້ທ່ານພຣະລະກຸນຕະກະພັດທິຍະເຫັນແຈ້ງ ນ້ອມໃຈໃຫ້ ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສ ດ້ວຍທຳມີກະຖາໂດຍວິທີຕ່າງ ໆ ຍິ່ງກວ່າປະມານ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ

ບຸກຄົນຕັດວັດຕະ[1]ໄດ້ ຈຶ່ງບັນລຸເຖິງຄວາມບໍ່ຫວັງ[2]
ແມ່ນ້ຳຄືຕັນຫາທີ່ຖືກອະຣະຫັດຕະມັກຍານເຮັດໃຫ້ເຫືອດແຫ້ງແລ້ວ
ຈຶ່ງໄຫຼໄປອີກບໍ່ໄດ້
ວັດຕະທີ່ຕັດໄດ້ແລ້ວ ຍ່ອມບໍ່ໝຸນວົນໄດ້ອີກ
ສະພາບນີ້ແລຄືຄວາມສິ້ນສຸດແຫ່ງທຸກ

**ທຸຕິຍະລະກຸນຕະກະພັດທິຍະສູດທີ ໘ ຈົບ**

# ໙. ປະຖົມສັດຕະສູດ

## ວ່າດ້ວຍສັດທີ່ຕິດຢູ່ໃນກາມ ສູດທີ ໑

[໗໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ມະນຸດທັງຫຼາຍໃນນະຄອນສາວັດຖີສ່ວນຫຼາຍເປັນຜູ້ຕິດໃຈໃນກາມທັງຫຼາຍເກີນຂອບເຂດ ເປັນຜູ້ຍິນດີ ຮັກແພງ ເພີດເພີນ ຫຼົງໄຫຼ ໝົກມຸ້ນມົວເມົາ ຢູ່ໃນກາມທັງຫຼາຍ

ຄັ້ງນັ້ນ ໃນເວລາເຊົ້າ ພິກຂຸຈຳນວນຫຼາຍຄອງອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ມະນຸດທັງຫຼາຍໃນນະຄອນສາວັດຖີສ່ວນຫຼາຍ ເປັນຜູ້ຕິດໃຈໃນກາມທັງຫຼາຍເກີນຂອບເຂດ ເປັນຜູ້ຍິນດີ ຮັກແພງ ເພີດເພີນ ຫຼົງໄຫຼໝົກມຸ້ນ ມົວເມົາຢູ່ໃນກາມທັງຫຼາຍ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

**ພຸດທະອຸທານ**

ສັດທັງຫຼາຍຕິດໃຈໃນກາມ
ຂ້ອງດ້ວຍກິເລດເຄື່ອງຂ້ອງໃນກາມ
ບໍ່ເຫັນໂທດໃນສັງໂຍດ ຂ້ອງໃນກິເລດເຄື່ອງຂ້ອງຄືສັງໂຍດ
ຈະເພິ່ງຂ້າມໂອຄະອັນກວ້າງໃຫຍ່ບໍ່ໄດ້ເລີຍ

**ປະຖົມສັດຕະສູດທີ ໗ ຈົບ**

## ໘. ທຸຕິຍະສັດຕະສູດ

## ວ່າດ້ວຍສັດທີ່ຕິດຢູ່ໃນກາມ ສູດທີ ໘

[໖໘] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ມະນຸດທັງຫຼາຍໃນນະຄອນສາວັດຖີສ່ວນຫຼາຍເປັນຜູ້ຕິດໃຈໃນກາມທັງຫຼາຍ ເປັນຜູ້ຍິນດີ ຮັກແພງ ເພີດເພີນ ຫຼົງໄຫຼ ໝົກມຸ້ນ ມືດມົນ ມົວເມົາຢູ່ໃນກາມທັງຫຼາຍ

ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີ

ວອນ ສະເດັດເຂົ້າໄປບິນທະບາດໃນເມືອງສາວັດຖີ ໄດ້ທອດພຣະເນດເຫັນມະນຸດທັງຫຼາຍໃນນະຄອນສາວັດ ຖີສ່ວນຫຼາຍເປັນຜູ້ຕິດໃຈໃນກາມທັງຫຼາຍ ເປັນຜູ້ຍິນດີ ຮັກແພງ ເພີດເພີນ ຫຼົງໄຫຼ ໝົກມຸ້ນ ມືດມົນມົວເມົາຢູ່ໃນກາມທັງຫຼາຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

**ພຸດທະອຸທານ**

ສັດທັງຫຼາຍມືດມົນຍ້ອນກາມ
ຖືກຕາໜ່າງຮ້ອຍຮັດໄວ້ແໜ້ນ
ຖືກເຄື່ອງມຸງບັງຄືຕັນຫາປົກຄຸມໄວ້
ຖືກເຄື່ອງຜູກມັດຄືຄວາມຜະໝາດຜູກພັນໄວ້ ຄືປາໃນຂ້ອງ[១]
ສັດເຫຼົ່ານັ້ນ ຈຶ່ງໄປສູ່ຄວາມແກ່ແລະຄວາມຕາຍ
ຄືງົວນ້ອຍທີ່ຍັງບໍ່ຢ່ານົມ ແລ່ນນຳແມ່ງົວ ສັນນັ້ນ

**ທຸຕິຍະສັດຕະສູດທີ ໔ ຈົບ**

## ໕. ອະປະຣະລະກຸນຕະກະພັດທິຍະສູດ

## ວ່າດ້ວຍພຣະລະກຸນຕະກະພັດທິຍະເຖຣະ ອີກສູດໜຶ່ງ

[໗໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະລະກຸນຕະກະພັດທິຍະຍ່າງຕາມຫຼັງພິກຂຸທັງຫຼາຍ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະລະກຸນຕະກະພັດທິຍະມີຜິວພັນທຍາບ ບໍ່ໜ້າເບິ່ງ ມີຮ່າງກາຍຄ່ອມເຕ້ຍ ຖືກພິກຂຸດູໝິ່ນ ກຳລັງຍ່າງຕາມຫຼັງພິກຂຸທັງຫຼາຍມາແຕ່ໄກ ຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍເຫັນພິກຂຸອົງນັ້ນຜູ້ມີຜິວພັນທຍາບ ບໍ່ໜ້າເບິ່ງ ມີຮ່າງກາຍຄ່ອມເຕ້ຍ ຖືກພິກຂຸດູໝິ່ນ ກຳລັງຍ່າງຕາມຫຼັງພິກຂຸທັງຫຼາຍມາແຕ່ໄກບໍ

ພິກຂຸທັງຫຼາຍຂາບທູນວ່າ ເຫັນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸອົງນັ້ນມີລິດຫຼາຍ ມີອານຸພາບຫຼາຍ ຍ້ອນທ່ານເຄີຍເຂົ້າສະມາບັດມາແລ້ວແທບທຸກຂະນິດ ທ່ານໃຊ້ປັນຍາອັນຍິ່ງດ້ວຍຕົນເອງ ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ[໑]ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະ ຊິດໂດຍຖືກຕ້ອງ ປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ

ທ່ານຈົ່ງເບິ່ງລົດ[໒]ເຊິ່ງມີສ່ວນປະກອບອັນບໍ່ມີໂທດ[໓]
ມີຫຼັງຄາຂາວ[໔] ມີເພົາດຽວ[໕] ບໍ່ມີທຸກ
ແລ່ນໄປເຖິງທີ່ໝາຍ ຕັດກະແສ ບໍ່ມີເຄື່ອງຜູກມັດ[໖]

**ອະປະຣະລະກຸນຕະກະພັດທິຍະສູດທີ ໕ ຈົບ**

# ໖. ຕັນຫາສັງຂະຍະສູດ

## ວ່າດ້ວຍຄວາມສິ້ນໄປແຫ່ງຕັນຫາ

[໖໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະອັນຍາໂກນທັນຍະນັ່ງຄູ້ບັນລັງ ຕັ້ງກາຍກົງ ພິຈາລະນາຄວາມລຸດພົ້ນຍ້ອນສິ້ນຕັນຫາຢູ່ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະອັນຍາໂກນທັນຍະຜູ້ກຳລັງນັ່ງຄູ້ບັນລັງ ຕັ້ງກາຍກົງ ພິຈາລະນາຄວາມລຸດພົ້ນຍ້ອນສິ້ນຕັນຫາຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ

ພຣະອະຣິຍະບຸກຄົນໃດບໍ່ມີຣາກ[໑]ບໍ່ມີພື້ນດິນ[໒]ບໍ່ມີເຄືອ[໓]
ຈະມີໃບ[໔]ແຕ່ບ່ອນໃດ
ໃຜນໍຄວນຈະຕິຕຽນພຣະອະຣິຍະບຸກຄົນນັ້ນ

ທີ່ເປັນປາດ ພົ້ນຈາກເຄື່ອງຜູກມັດແລ້ວ
ພຣະອະຣິຍະບຸກຄົນນັ້ນ ແມ່ນເທວະດາກໍຊື່ນຊົມ ເຖິງພົມກໍສັນເສີນ

**ຕັນຫາສັງຂະຍະສູດທີ ໖ ຈົບ**

## ໗. ປະປັນຈັກຂະຍະສູດ

## ວ່າດ້ວຍຄວາມສິ້ນໄປແຫ່ງກິເລດເຄື່ອງລ້າຊ້າ

[໖໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງພິຈາລະນາເຖິງການລະສ່ວນສັນຍາອັນປະກອບດ້ວຍກິເລດເຄື່ອງລ້າຊ້າ[໑]ຂອງພຣະອົງຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເຖິງການລະສ່ວນສັນຍາອັນປະກອບດ້ວຍກິເລດເຄື່ອງລ້າຊ້າຂອງພຣະອົງແລ້ວ ຈຶ່ງຊົງເປັ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ

ຜູ້ໃດບໍ່ມີກິເລດເຄື່ອງລ້າຊ້າແລະການດຳລົງຢູ່ (ໃນສັງສາຣະວັດ)
ກ້າວພົ້ນບ່ອນຕໍ່[໒]ແລະຫຼິ້ມໄລ[໓]ໄດ້ແລ້ວ
ຊາວໂລກພ້ອມທັງເທວະໂລກ
ຍ່ອມບໍ່ດູໝິ່ນຜູ້ນັ້ນເຊິ່ງບໍ່ມີຕັນຫາ ເປັນມຸນີ ທ່ຽວໄປ

**ປະປັນຈັກຂະຍະສູດທີ ໗ ຈົບ**

## ໘. ກັດຈານະສູດ

## ວ່າດ້ວຍພຣະມະຫາກັດຈານະ

[໖໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະມະຫາກັດຈານະນັ່ງຄູ້ບັນລັງ ຕັ້ງກາຍກົງມີກາຍະຄະຕາສະຕິທີ່ຕັ້ງໝັ້ນພາຍໃນຕົນຢູ່ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນ ທ່ານພຣະມະຫາກັດຈານະຜູ້ກຳລັງນັ່ງຄູ້ບັນລັງຕັ້ງກາຍກົງ ມີກາຍະຄະຕາສະຕິທີ່ຕັ້ງໝັ້ນພາຍໃນຕົນຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ

ຜູ້ໃດເພິ່ງເຂົ້າໄປຕັ້ງກາຍະຄະຕາສະຕິໄວ້ໃນການທຸກເມື່ອວ່າ
ຖ້າໃນອະດີດ ກຳກິເລດບໍ່ເພິ່ງມີແກ່ເຮົາ
ໃນປັດຈຸບັນ ອັດຕະພາບນີ້ກໍບໍ່ເພິ່ງມີແກ່ເຮົາ
ໃນອັດຕະພາບນີ້ ກຳກິເລດຈັກບໍ່ມີແກ່ເຮົາ
ໃນອະນາຄົດ ວິປາກະວັດກໍຈັກບໍ່ມີແກ່ເຮົາ
ຜູ້ນັ້ນມີປົກກະຕິຢູ່ດ້ວຍອະນຸປຸບພະວິຫານໃນການທັງ ໓ ນັ້ນ
ເພິ່ງຂ້າມພົ້ນຕັນຫາທີ່ຊື່ວິສັດຕິກາໄດ້
ໂດຍເວລາທີ່ອະຣິຍະມັກເກີດຂຶ້ນນັ້ນແລ

**ກັດຈານະສູດທີ ໗ ຈົບ**

## ໘. ອຸທະປານະສູດ

## ວ່າດ້ວຍນ້ຳສ້າງ

[໖໙] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນມັນລະ ພ້ອມດ້ວຍພິກຂຸສົງ ໝູ່ໃຫຍ່ ໄດ້ສະເດັດເຖິງຖູນະຄາມໝູ່ບ້ານພາມໃນແຄວ້ນມັນລະ ຊາວຖູນະຄາມຜູ້ເປັນພາມແລະຄະຫະບໍດີໄດ້ຟັງວ່າ ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າພຣະສະມະນະໂຄດົມສາກະຍະບຸດຜູ້ສະເດັດອອກບວດຈາກສາກະຍະຕະກູນ ກຳລັງສະເດັດຈາຣິກໄປໃນແຄວ້ນມັນລະ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ໄດ້ສະເດັດເຖິງຖູນະຄາມໂດຍລຳດັບ ພວກເຂົາຈຶ່ງໃຊ້ຫຍ້າແລະແກບຖົມນ້ຳສ້າງຈົນເຕັມເຖິງປາກນ້ຳສ້າງດ້ວຍຕັ້ງໃຈວ່າ ສະມະນະຫົວໂລ້ນເຫຼົ່ານັ້ນຢ່າໄດ້ນ້ຳດື່ມ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງແວ່ລົງຂ້າງທາງ ສະເດັດເຂົ້າໄປສູ່ຄ່ວງໄມ້ຕົ້ນໜຶ່ງ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ພຣະຜູ້ມີພຣະພາກເຈົ້າ ເມື່ອປະທັບນັ່ງແລ້ວ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ອານົນ ທ່ານຈົ່ງນຳນ້ຳດື່ມຈາກນ້ຳສ້າງມາເພື່ອເຮົາ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກ ເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ບັດນີ້ ນ້ຳສ້າງນັ້ນຖືກຊາວຖູນະຄາມຜູ້ເປັນພານແລະຄະຫະບໍດີໃຊ້ຫຍ້າແລະແກບຖົມຈົນເຕັມປາກນ້ຳສ້າງ ດ້ວຍຕັ້ງໃຈວ່າ ສະມະນະຫົວໂລ້ນເຫຼົ່ານັ້ນຢ່າໄດ້ນ້ຳດື່ມ ຂ້ານ້ອຍ

ແມ່ນເທື່ອທີ ໒ ພຣະຜູ້ມີພຣະພາກເຈົ້າຕັດກັບທ່ານພຣະອານົນດັ່ງນີ້ວ່າ ອານົນ ທ່ານຈົ່ງນຳນ້ຳດື່ມຈາກນ້ຳສ້າງນັ້ນມາເພື່ອເຮົາ

ທ່ານພຣະອານົນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າຂ້າແດ່ພຣະອົງຜູ້ຈະເລີນບັດນີ້ ນ້ຳສ້າງນັ້ນຖືກຊາວຖູນະຄາມຜູ້ເປັນພານແລະຄະຫະບໍດີໃຊ້ຫຍ້າແລະແກບຖົມຈົນເຕັມປາກນ້ຳສ້າງ ດ້ວຍຕັ້ງໃຈວ່າ ສະມະນະຫົວໂລ້ນເຫຼົ່ານັ້ນຢ່າໄດ້ນ້ຳດື່ມ ຂ້ານ້ອຍ

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າຕັດກັບທ່ານພຣະອານົນດັ່ງນີ້ວ່າ ອານົນ ທ່ານຈົ່ງນຳນ້ຳດື່ມຈາກນ້ຳສ້າງນັ້ນມາເພື່ອເຮົາ

ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດແລ້ວຖືບາດຍ່າງໄປທີ່ນ້ຳສ້າງນັ້ນ ຄັ້ງນັ້ນນ້ຳສ້າງນັ້ນເມື່ອທ່ານພຣະອານົນຍ່າງເຂົ້າໄປເຖິງ ນ້ຳກໍລົ້ນຂຶ້ນມາ ພັດເອົາຫຍ້າແລະແກບທັງໝົດນັ້ນອອກໄປຈາກປາກນ້ຳສ້າງ ເຫຼືອແຕ່ນ້ຳທີ່ໃສສະອາດ ບໍ່ຂຸ່ນ ເຕັມປ່ຽມເຖິງປາກນ້ຳສ້າງ ຂັງຢູ່ຄືໄຫຼອອກຈາກປາກນ້ຳສ້າງໄດ້ເອງ

ລຳດັບນັ້ນ ທ່ານພຣະອານົນຄິດວ່າ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຕະຖາຄົດຊົງເປັນຜູ້ມີລິດຫຼາຍ ມີອານຸພາບຫຼາຍຈິງ ນ້ຳສ້າງນີ້ ເມື່ອເຮົາຍ່າງເຂົ້າໄປເຖິງນ້ຳ ກໍລົ້ນຂຶ້ນມາພັດເອົາຫຍ້າແລະແກບທັງໝົດນັ້ນອອກໄປຈາກປາກນ້ຳສ້າງ ເຫຼືອແຕ່ນ້ຳທີ່ໃສສະອາດ ບໍ່ຂຸ່ນ ເຕັມປ່ຽມເຖິງປາກນ້ຳສ້າງ ຂັງຢູ່ຄືໄຫຼອອກມາຈາກປາກນ້ຳສ້າງໄດ້ເອງແລ້ວ ທ່ານກໍໃຊ້ບາດຕັກນ້ຳນຳເຂົ້າໄປຖວາຍພຣະຜູ້ມີພຣະພາກເຈົ້າ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຕະຖາຄົດຊົງເປັນຜູ້ມີລິດຫຼາຍ ມີອານຸພາບຫຼາຍຈິງ ຂ້າແດ່ພຣະອົງຜູ້ຈະເລີນ ນ້ຳສ້າງນີ້ເມື່ອຂ້າພຣະອົງຍ່າງເຂົ້າໄປເຖິງ ນ້ຳກໍລົ້ນຂຶ້ນມາພັດເອົາຫຍ້າແລະແກບທັງໝົດນັ້ນອອກໄປຈາກປາກນ້ຳສ້າງ ເຫຼືອແຕ່ນ້ຳທີ່ໃສສະອາດ ບໍ່ຂຸ່ນ ເຕັມປ່ຽມເຖິງປາກນ້ຳສ້າງ ຂັງຢູ່ຄືໄຫຼອອກມາຈາກປາກນ້ຳສ້າງໄດ້ເອງ ຂໍພຣະຜູ້ມີພຣະພາກເຈົ້າຊົງດື່ມນ້ຳເທີ້ນ ຂໍພຣະສຸດຄົດເຈົ້າຊົງດື່ມນ້ຳເທີ້ນ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

## ພຸດທະອຸທານ

ຖ້ານ້ຳມີຢູ່ຕະຫຼອດເວລາ ກໍບໍ່ຈຳເປັນຕ້ອງຂຸດນ້ຳສ້າງ
ພຣະພຸດທະເຈົ້າເຊັ່ນເຮົາ ຕັດຮາກຕັນຫາຂາດແລ້ວ
ກໍບໍ່ຈຳເປັນຕ້ອງທ່ຽວສະແຫວງຫາ (ນ້ຳຫຼືປັດໄຈແນວອື່ນ)

**ອຸທະປານະສູດທີ ໙ ຈົບ**

# ໑໐. ອຸເທນສູດ

## ວ່າດ້ວຍພະຣາດຊະວັງຂອງພຣະເຈົ້າອຸເທນຖືກເຜົາ

[໗໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໂຄສິຕາຣາມ ເຂດນະຄອນໂກສຳພີ ສະໄໝນັ້ນ ເມື່ອພຣະເຈົ້າອຸເທນສະເດັດປະພາດພຣະຣາດຊະອຸທະຍານ ພາຍໃນພະຣາດຊະວັງຖືກໄຟໄໝ້ ຍິງ ໕໐໐ ຄົນ ມີພຣະນາງສາມາວະດີເປັນຫົວໜ້າ ຕ່າງເສຍຊີວິດທັງໝົດ

ຄັ້ງນັ້ນ ໃນເວລາເຊົ້າ ພິກຂຸຈຳນວນຫຼາຍຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງໂກສຳພີ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ເມື່ອພຣະເຈົ້າອຸເທນສະເດັດປະພາດພຣະຣາດຊະອຸທະຍານ ພາຍໃນພະຣາດຊະວັງຖືກໄຟໄໝ້ ຍິງ ໕໐໐ ຄົນ ມີພຣະນາງສາມາວະດີເປັນຫົວໜ້າ ຕ່າງເສຍຊີວິດທັງໝົດ ຂ້າແດ່ພຣະອົງຜູ້ຈະເລີນ ຄະຕິຂອງອຸປາສິກາເຫຼົ່ານັ້ນເປັນແນວໃດ? ພົບໜ້າເປັນແນວໃດ? ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸປາສິກາເຫຼົ່ານັ້ນທີ່ເປັນໂສດາບັນກໍມີ ທີ່ເປັນສະກະທາຄາມີນີກໍມີ ທີ່ເປັນອະນາຄາມີນີກໍມີ ພິກຂຸທັງຫຼາຍ ອຸປາສິກາເຫຼົ່ານັ້ນທັງໝົດ ຊື່ວ່າບໍ່ຕາຍເປົ່າ[໑]

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

## ພຸດທະອຸທານ

ສັດໂລກມີໂມຫະເປັນເຄື່ອງຜູກມັດ
ຍ່ອມຜາກົດຄືສົມບູນດ້ວຍເຫດ

ຄືນພານມີອຸປະທິເປັນເຄື່ອງຜູກມັດ ຖືກຄວາມມືດຫຸ້ມຫໍ່ໄວ້
ຍ່ອມຜາກົດຄືໝັ້ນຍືນນິຣັນດອນ
ແຕ່ຜູ້ເຫັນຢູ່ ຍ່ອມບໍ່ມີກິເລດເຄື່ອງກັງວົນ

**ອຸເທນສູດທີ ໑໐ ຈົບ**

**ຈູລະວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໘. ປາຕະລິຄາມິຍະວັກ

## ໝວດວ່າດ້ວຍປາຕະລິຄາມ

## ໑. ປະຖົມນິບພານປະຕິສັງຍຸດຕະສູດ

### ວ່າດ້ວຍທຳທີ່ກ່ຽວກັບນິບພານ ສູດທີ ໑

[໗໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາວ່າດ້ວຍເລື້ອງນິບພານ ຝ່າຍພິກຂຸເຫຼົ່ານັ້ນກໍເຮັດໃຫ້ໝັ້ນ ມະນະສິການ ແລ້ວນ້ອມນຶກທຳມີກະຖາທັງປວງດ້ວຍຈິດ ງຽງໂສດລົງຟັງທຳ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ

ພິກຂຸທັງຫຼາຍ ອາຍະຕະນະ°ມີຢູ່
(ແຕ່) ໃນອາຍະຕະນະນັ້ນບໍ່ມີປະຖະວີທາດ
ບໍ່ມີອາໂປທາດ ບໍ່ມີເຕໂຊທາດ ບໍ່ມີວາໂຍທາດ
ບໍ່ມີອາກາສານັນຈາຍະຕະນະ ບໍ່ມີວິນຍານັນຈາຍະຕະນະ
ບໍ່ມີອາກິນຈັນຍາຍະຕະນະ ບໍ່ມີເນວະສັນຍານາສັນຍາຍະຕະນະ
ບໍ່ມີໂລກນີ້ ບໍ່ມີໂລກໜ້າ ບໍ່ມີດວງອາທິດ ແລະດວງຈັນທັງສອງນັ້ນ
ພິກຂຸທັງຫຼາຍ ເຮົາບໍ່ຮຽກອາຍະຕະນະນັ້ນວ່າ
ມີການມາ ມີການໄປ ມີການຕັ້ງຢູ່ ມີການຈຸຕິ ມີການອຸບັດ
ອາຍະຕະນະນັ້ນບໍ່ມີບ່ອນຕັ້ງອາໄສ ບໍ່ປ່ຽນແປງ
ບໍ່ມີອາລົມຍຶດໜ່ຽວ ນີ້ແລ ຄືບ່ອນສຸດແຫ່ງທຸກ

**ປະຖົມນິບພານປະຕິສັງຍຸດຕະສູດທີ ໑ ຈົບ**

## ໒. ທຸຕິຍະນິບພານປະຕິສັງຍຸດຕະສູດ

## ວ່າດ້ວຍທຳທີ່ກ່ຽວກັບນິບພານ ສູດທີ ໒

[໗໒] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາວ່າດ້ວຍເລື້ອງນິບພານ ຝ່າຍພິກຂຸເຫຼົ່ານັ້ນກໍເຮັດໃຫ້ໝັ້ນ ມະນະສິການແລ້ວນ້ອມນຶກທຳມີກະຖາທັງປວງດ້ວຍຈິດ ງ່ຽງໂສດລົງຟັງທຳ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ

ຖານະທີ່ບຸກຄົນເຫັນໄດ້ຍາກ
ຊື່ວ່ານິບພານອັນບໍ່ມີຕັນຫາ
ນິບພານນັ້ນເປັນທຳທີ່ມີຢູ່ຈິງ ບໍ່ເຫັນໄດ້ງ່າຍ

ຕັນຫາອັນບຸກຄົນແທງຕະຫຼອດແລ້ວ
ກິເລດເຄື່ອງກັງວົນກໍບໍ່ມີແກ່ຜູ້ຮູ້ຢູ່ ເຫັນຢູ່

**ທຸຕິຍະນິບພານປະຕິສັງຍຸດຕະສູດທີ ໘ ຈົບ**

## ໙. ຕະຕິຍະນິບພານປະຕິສັງຍຸດຕະສູດ

## ວ່າດ້ວຍທຳທີ່ກ່ຽວກັບນິບພານ ສູດທີ ໙

[໗໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາວ່າດ້ວຍເລື້ອງນິບພານ ຝ່າຍພິກຂຸເຫຼົ່ານັ້ນກໍເຮັດໃຫ້ໝັ້ນ ມະນະສິການແລ້ວນ້ອມນຶກທຳມີກະຖາທັງປວງດ້ວຍຈິດ ງຽງໂສດລົງຟັງທຳ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ

ພິກຂຸທັງຫຼາຍ ທຳມະຊາດທີ່ບໍ່ເກີດ ບໍ່ຜາກົດ
ບໍ່ຖືກເຫດສ້າງ ບໍ່ຖືກປັດໄຈປຸງແຕ່ງ ມີຢູ່
ພິກຂຸທັງຫຼາຍ ຖ້າທຳມະຊາດທີ່ບໍ່ເກີດ ບໍ່ຜາກົດ
ບໍ່ຖືກເຫດສ້າງ ບໍ່ຖືກປັດໄຈປຸງແຕ່ງ ຈັກບໍ່ມີ
ໃນໂລກນີ້ ກໍຈະບໍ່ຜາກົດພາວະສະລັດອອກຈາກທຳມະຊາດທີ່ເກີດແລ້ວ
ທີ່ຜາກົດແລ້ວ ທີ່ຖືກເຫດສ້າງແລ້ວ ທີ່ຖືກປັດໄຈປຸງແຕ່ງແລ້ວ
ພິກຂຸທັງຫຼາຍ ກໍຍ້ອນທຳມະຊາດທີ່ບໍ່ເກີດ ບໍ່ຜາກົດ
ບໍ່ຖືກເຫດສ້າງ ບໍ່ຖືກປັດໄຈປຸງແຕ່ງ ມີຢູ່
ດັ່ງນັ້ນ ຈຶ່ງຜາກົດພາວະສະລັດອອກຈາກທຳມະຊາດທີ່ເກີດແລ້ວ
ທີ່ຜາກົດແລ້ວ ທີ່ຖືກເຫດສ້າງແລ້ວ ທີ່ຖືກປັດໄຈປຸງແຕ່ງແລ້ວ

**ຕະຕິຍະນິບພານປະຕິສັງຍຸດຕະສູດທີ ໙ ຈົບ**

# ໔. ຈະຕຸດຖະນິບພານປະຕິສັງຍຸດຕະສູດ
## ວ່າດ້ວຍທຳທີ່ກ່ຽວກັບນິບພານ ສູດທີ ໔

[໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮ່ວຍຮ່ຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາວ່າດ້ວຍເລື້ອງນິບພານ ຝ່າຍພິກຂຸເຫຼົ່ານັ້ນກໍເຮັດໃຫ້ໝັ້ນ ມະນະສິການແລ້ວນ້ອມນຶກທຳມີກະຖາທັງປວງດ້ວຍຈິດ ງ່ຽງໂສດລົງຟັງທຳ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

### ພຸດທະອຸທານ

ຄວາມຫວັ່ນໄຫວຍ່ອມມີແກ່ບຸກຄົນຜູ້ຖືກຕັນຫາແລະທິດຖິອາໄສ
ຄວາມຫວັ່ນໄຫວຍ່ອມບໍ່ມີແກ່ບຸກຄົນຜູ້ບໍ່ຖືກຕັນຫາແລະທິດຖິອາໄສ
ເມື່ອຄວາມຫວັ່ນໄຫວ (ຈິດ) ບໍ່ມີ ກໍຍ່ອມມີປັດສັດທິ[໑]
ເມື່ອມີປັດສັດທິ ກໍຍ່ອມບໍ່ມີຕັນຫາ
ເມື່ອບໍ່ມີຕັນຫາ ກໍບໍ່ມີການວຽນວ່າຍຕາຍເກີດ
ເມື່ອບໍ່ມີການວຽນວ່າຍຕາຍເກີດ ກໍບໍ່ມີການຈຸຕິແລະການອຸບັດ
ເມື່ອບໍ່ມີການຈຸຕິແລະການອຸບັດ ກໍບໍ່ມີໂລກນີ້ ໂລກອື່ນ
ແລະລະຫວ່າງໂລກທັງສອງ ນີ້ຄື ບ່ອນສຸດແຫ່ງທຸກ

**ຈະຕຸດຖະນິບພານປະຕິສັງຍຸດຕະສູດທີ ໔ ຈົບ**

# ໕. ຈຸນທະສູດ[໑]
## ວ່າດ້ວຍນາຍຈຸນທະກຳມາຣະບຸດ[໒]

[໗໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນມັນລະພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ໄດ້ສະເດັດໄປເຖິງເມືອງປາວາ ໄດ້ຂ່າວວ່າ ໃນບ່ອນນັ້ນພຣະຜູ້ມີພຣະພາກເຈົ້າປະທັບຢູ່ສວນອຳພະວັນຂອງນາຍຈຸນທະກຳມາຣະບຸດ

ນາຍຈຸນທະກຳມາຣະບຸດໄດ້ຟັງວ່າ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນມັນລະພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ໄດ້ສະເດັດເຖິງເມືອງປາວາແລ້ວປະທັບຢູ່ສວນອຳພະວັນຂອງເຮົາ ນາຍຈຸນທະກຳມາຣະບຸດ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ນາຍຈຸນທະກຳມາຣະບຸດເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮ່ຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ຄັ້ງນັ້ນ ນາຍຈຸນທະກຳມາຣະບຸດຜູ້ອັນພຣະຜູ້ມີພຣະພາກເຈົ້າຕັດຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮ່ຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງຂ້າພຣະອົງໃນມື້ອື່ນນີ້ເທີ້ນຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນດ້ວຍພຣະອາການດຸດສະນີ

ຄັ້ງນັ້ນ ນາຍຈຸນທະກຳມາຣະບຸດຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວລຸກຂຶ້ນຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປເມື່ອຄືນນັ້ນຜ່ານໄປ ນາຍຈຸນທະກຳມາຣະບຸດສັ່ງໃຫ້ຄົນຈັດຂອງຂົບສັນທີ່ປະນີດ ແລະສູກະຣະມັດທະວະ[๑] ຈຳນວນພຽງພໍໄວ້ໃນນິເວດຂອງຕົນ ແລ້ວສົ່ງຄົນໄປໃຫ້ຂາບທູນພັດຕະການວ່າ ຂ້າແດ່ພຣະອົງຜູ້ຈະເລີນ ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ ຂ້ານ້ອຍ

ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປສູ່ນິເວດຂອງນາຍຈຸນທະກຳມາຣະບຸດພ້ອມດ້ວຍພິກຂຸສົງ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ໄດ້ຮັບສັ່ງຮຽກນາຍຈຸນທະກຳມາຣະບຸດມາຕັດວ່າ ຈຸນທະ ທ່ານຈົ່ງປະເຄນເຮົາດ້ວຍສູກະຣະມັດທະວະທີ່ກຽມໄວ້ ປະເຄນພິກຂຸສົງດ້ວຍຂອງຂົບສັນແນວອື່ນທີ່ກຽມໄວ້ເທີ້ນ ນາຍຈຸນທະກຳມາຣະບຸດທູນຮັບສະໜອງພຣະດຳຣັດແລ້ວ ປະເຄນພຣະຜູ້ມີພຣະພາກເຈົ້າດ້ວຍສູກະຣະມັດທະວະທີ່ກຽມໄວ້ ປະເຄນຂອງຂົບສັນແນວອື່ນທີ່ກຽມໄວ້ແດ່ພິກຂຸສົງ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກນາຍຈຸນທະກຳມາຣະບຸດມາຕັດວ່າ ຈຸນທະ ທ່ານຈົ່ງຝັງສູກະຣະມັດທະວະທີ່ເຫຼືອໃນຂຸມ ເຮົາຍັງບໍ່ເຫັນໃຜໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດ ທີ່ຈະບໍຣິໂພກສູກະຣະມັດທະວະນັ້ນແລ້ວເພິ່ງເຖິງການຍ່ອຍໄປດ້ວຍດີ ຍົກເວັ້ນຕະຖາຄົດ ນາຍຈຸນທະກຳມາຣະບຸດ ທູນຮັບສະໜອງພຣະດຳຣັດແລ້ວ ນຳສູກະຣະມັດທະວະທີ່ເຫຼືອນັ້ນໄປຝັງໄວ້ໃນຂຸມສຳເລັດແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນແລ້ວ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ນາຍຈຸນທະເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າຮວຍຮ່ຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ແລ້ວຊົງລຸກຈາກພຸດທະອາດ ສະເດັດຈາກໄປ

ຫຼັງຈາກທີ່ພຣະຜູ້ມີພຣະພາກເຈົ້າສະເຫວີຍພຣະກະຍາຫານ ຂອງນາຍຈຸນທະກຳມາຣະບຸດສຳເລັດແລ້ວ ໄດ້ເກີດອາການພຣະປະຊວນຢ່າງຮຸນແຮງ ມີທຸກຂະເວທະນາເກີດຈາກໂຣກລົງພຣະບັງຄົນໜັກເປັນເລືອດໃກ້ຈະຈະປະຣິນິບພານ ໄດ້ຂ່າວວ່າ ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າຊົງມີສະຕິສຳປະຊັນຍະ ຊົງອົດກັ້ນເວທະນານັ້ນໄວ້ບໍ່ໄດ້ຊົງພັ່ນພືງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ມາເທີ້ນອານົນເຮົາໄປສູ່ນະຄອນກຸສິນາຣາກັນເທີ້ນ ທ່ານພຣະອານົນທູນຮັບສະໜອງພຣະດຳຣັດ ພຣະຜູ້ມີພຣະພາກເຈົ້າທັນທີ

ຂ້າພະເຈົ້າໄດ້ສະດັບມາວ່າ ພຣະຜູ້ມີພຣະພາກເຈົ້າຜູ້ຊົງມີພຣະປັຊາ
ສະເຫວີຍພຣະກະຍາຫານຂອງນາຍຈຸນທະກຳມາຣະບຸດແລ້ວ
ຊົງພຣະປະຊວນໜັກໃກ້ຈະຈະປະຣິນິບພານ
ເມື່ອພຣະຜູ້ມີພຣະພາກເຈົ້າສະເຫວີຍສູກະຣະມັດທະວະແລ້ວ
ໄດ້ເກີດອາການພຣະປະຊວນຢ່າງຮຸນແຮງລົງພຣະບັງຄົນໜັກ
ຕັດວ່າ ເຮົາຈະໄປສູ່ນະຄອນກຸສິນາຣາ

## ຮັບສັ່ງຂໍນ້ຳດື່ມ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງແວ່ລົງຂ້າງທາງ ສະເດັດເຂົ້າໄປສູ່ຄ່ວງໄມ້ຕົ້ນໜຶ່ງແລ້ວຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ອານົນ ທ່ານຈົ່ງປູສັງຄາຕິ ໔ ຊັ້ນແກ່ເຮົາ ເຮົາອິດເມື່ອຍ ຈະນັ່ງ ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວຈຶ່ງປູສັງຄາຕິ ໔ ຊັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງພຸດທະອາດນັ້ນແລ້ວຕັດກັບທ່ານພຣະອານົນດັ່ງນີ້ວ່າ ອານົນ ທ່ານຈົ່ງນຳນ້ຳດື່ມມາເພື່ອເຮົາເຮົາຢາກຈະດື່ມນ້ຳ

ເມື່ອພຣະຜູ້ມີພຣະພາກເຈົ້າຮັບສັ່ງແນວນີ້ ທ່ານພຣະອານົນຈຶ່ງໄດ້ຂາບທູນພຣະຜູ້ມີພຣະພາກ ເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ກວຽນປະມານ ໕໐໐ ເຫຼັ້ມຜ່ານໄປເມື່ອກີ້ນີ້ເອງ ນ້ຳນັ້ນຖືກລໍ້ກວຽນຢຽບຈົນຂຸ່ນເປັນຕົມໄຫຼໄປ ຂ້າແດ່ພຣະອົງຜູ້ຈະເລີນ ແມ່ນ້ຳກຸກຸຕານີ້ຢູ່ບໍ່ໄກ ມີນ້ຳໃສຮົດຈືດ ເຢັນສ່ຳ ສະອາດ ມີທ່າຂຶ້ນລົງສະດວກ ໜ້າອອນຊອນພຣະຜູ້ມີພຣະພາກເຈົ້າຈັກຊົງດື່ມແລະສົງ ພຣະວໍຣະກາຍໃຫ້ຊຸ່ມຊື່ນໄດ້ ທີ່ແມ່ນ້ຳນັ້ນ

ແມ່ນເທື່ອທີ ໔ ພຣະຜູ້ມີພຣະພາກເຈົ້າຕັດກັບທ່ານພຣະອານົນດັ່ງນີ້ວ່າ ອານົນ ທ່ານຈົ່ງນຳນ້ຳດື່ມມາເພື່ອເຮົາ ເຮົາຢາກຈະດື່ມນ້ຳ

ທ່ານພຣະອານົນໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ກວຽນປະມານ ໕໐໐ ເຫຼັ້ມຜ່ານໄປເມື່ອກີ້ນີ້ເອງ ນ້ຳນັ້ນຖືກລໍ້ກວຽນຢຽບ ຈົນຂຸ່ນເປັນຕົມໄຫຼໄປ ຂ້າແດ່ພຣະອົງຜູ້ຈະເລີນ

ແມ່ນ້ຳກຸກຸຕານີ້ຢູ່ບໍ່ໄກ ມີນ້ຳໃສ ຮົດຈືດ ເຢັນສ່ຳ ສະອາດ ມີທ່າຂຶ້ນລົງສະດວກ ໜ້າອອນຊອນ ພຣະຜູ້ມີພຣະພາກເຈົ້າຈັກຊົງດື່ມ ແລະສົງພຣະວໍຣະກາຍໃຫ້ຊຸ່ມຊື່ນໄດ້ທີ່ແມ່ນ້ຳນັ້ນ

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າຕັດກັບທ່ານພຣະອານົນດັ່ງນີ້ວ່າ ອານົນ ທ່ານຈົ່ງນຳນ້ຳດື່ມມາເພື່ອເຮົາ ເຮົາຢາກຈະດື່ມນ້ຳ ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ຖືບາດຍ່າງໄປທີ່ແມ່ນ້ຳນັ້ນ

ຄັ້ງນັ້ນ ແມ່ນ້ຳເຊິ່ງຖືກລໍ້ກວຽນຢຽບຈົນຂຸ່ນເປັນຕົມໄຫຼໄປຢູ່ນັ້ນ ເມື່ອທ່ານພຣະ ອານົນຍ່າງເຂົ້າໄປເຖິງ ກໍກາຍເປັນນ້ຳໃສສະອາດ ບໍ່ຂຸ່ນ ໄຫຼໄປຕາມປົກກະຕິ ລຳດັບນັ້ນ ທ່ານພຣະອານົນໄດ້ມີຄວາມຄິດດັ່ງນີ້ວ່າ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຕະຖາຄົດຊົງມີລິດຫຼາຍ ມີອານຸພາບຫຼາຍຈິງ ແມ່ນ້ຳນີ້ມີນ້ຳໜ້ອຍ ຖືກລໍ້ກວຽນຢຽບຈົນຂຸ່ນເປັນຕົມໄປ ເມື່ອເຮົາຍ່າງມາເຖິງ ກໍກາຍເປັນນ້ຳໃສ ສະອາດ ບໍ່ຂຸ່ນ ໄຫຼໄປ ທ່ານພຣະອານົນຈຶ່ງໃຊ້ບາດຕັກນ້ຳ ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຕະຖາຄົດຊົງມີລິດຫຼາຍ ມີອານຸພາບຫຼາຍຈິງ ຂ້າແດ່ພຣະອົງຜູ້ຈະເລີນ ແມ່ນ້ຳນີ້ມີນ້ຳໜ້ອຍ ຖືກລໍ້ ກວຽນຢຽບຈົນຂຸ່ນເປັນຕົມໄຫຼໄປ ເມື່ອຂ້າພຣະອົງຍ່າງເຂົ້າໄປເຖິງ ກໍກາຍເປັນນ້ຳໃສສະອາດ ບໍ່ຂຸ່ນໄຫຼໄປ ຂໍພຣະຜູ້ມີພຣະພາກເຈົ້າ ຊົງດື່ມນ້ຳເທີ້ນ ຂໍພຣະສຸດຄົດເຈົ້າຊົງດື່ມນ້ຳເທີ້ນ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງດື່ມນ້ຳແລ້ວສະເດັດໄປທີ່ແມ່ນ້ຳກຸກຸຕາ ພ້ອມກັບສົງໝູ່ໃຫຍ່ ພໍສະເດັດເຖິງກໍສະເດັດລົງແມ່ນ້ຳນັ້ນ ຊົງອາບແລະຊົງດື່ມແລ້ວສະເດັດຂຶ້ນ ສະເດັດກັບໄປສູ່ສວນອຳພະວັນແລ້ວຮັບສັ່ງຮຽກທ່ານພຣະຈຸນທະກະມາຕັດວ່າ ຈຸນທະກະ ທ່ານຈົ່ງປູຜ້າສັງຄາຕິ ໔ ຊັ້ນແກ່ເຮົາ ເຮົາອິດເມື່ອຍ ຈະນອນ ທ່ານພຣະຈຸນທະກະທູນຮັບສະໜອງພຣະດຳຣັດແລ້ວປູຜ້າສັງຄາຕິ ໔ ຊັ້ນ ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສຳເລັດສີຫະໄສຍາດ ໂດຍສະແຄງຂວາ ຊົງຊ້ອນພຣະບາດເຫຼື່ອມພຣະບາດ ຊົງມີສະຕິສຳປະຊັນຍະບໍລິບູນ ຊົງກຳນົດພຣະທະໄທວ່າຈະສະເດັດລຸກຂຶ້ນ ສ່ວນທ່ານພຣະຈຸນທະກະກໍນັ່ງເຝົ້າຢູ່ເບື້ອງພຣະພັກຂອງພຣະອົງໃນບ່ອນນັ້ນເອງ

ພາຍຫຼັງ ພຣະທຳສັງຄາຫະກາຈານໄດ້ຮົດຈະນາຄາຖາສະຫຼຸບດັ່ງນີ້ວ່າ

ພຣະພຸດທະເຈົ້າຜູ້ຕະຖາຄົດສາດສະດາ ຫາຜູ້ປຽບບໍ່ໄດ້ໃນໂລກນີ້
ຊົງມີພຣະວໍຣະກາຍອິດເມື່ອຍຫຼາຍ
ສະເດັດເຖິງແມ່ນ້ຳກຸກຸຕາເຊິ່ງມີນ້ຳໃສ ຮົດຈືດ ສະອາດ
ສະເດັດລົງໄປສູ່ແມ່ນ້ຳນັ້ນ
ພຣະສາດສະດາຜູ້ອັນຊາວໂລກທັງໝົດບູຊາ

ສະເດັດຢູ່ທ່າມກາງພິກຂຸສົງ
ຊົງອາບແລະຊົງດື່ມນ້ຳແລ້ວສະເດັດຂຶ້ນຈາກແມ່ນ້ຳ
ພຣະຜູ້ມີພຣະພາກເຈົ້າບໍຣົມມະສາດສະດາ ຜູ້ຊົງສະແຫວງຫາຄຸນຍິ່ງໃຫຍ່
ຊົງປະກາດເຜີຍແຜ່ທຳວິໄນໄວ້ໃນພຸດທະສາດສະໜານີ້
ສະເດັດເຂົ້າໄປສູ່ສວນອຳພະວັນແລ້ວ
ຮັບສັ່ງຮຽກພຣະຈຸນທະກະມາຕັດວ່າ
ທ່ານຈົ່ງປູຜ້າສັງຄາຕິ ໔ ຊັ້ນໃຫ້ເປັນບ່ອນນອນແກ່ເຮົາ
ທ່ານພຣະຈຸນທະກະນັ້ນ ອັນພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງເຝິກຝົນອົບຮົມພຣະອົງແລ້ວຕັດເຕືອນ
ຈຶ່ງປູຜ້າສັງຄາຕິ ໔ ຊັ້ນ ທັນທີ
ພຣະບໍຣົມມະສາດສະດາຊົງມີພຣະວໍຣະກາຍອິດເມື່ອຍ ຊົງບັນທົມແລ້ວ
ຝ່າຍພຣະຈຸນທະກະກໍນັ່ງເຝົ້າຢູ່ສະເພາະພຣະພັກໃນບ່ອນນັ້ນ

## ບິນທະບາດທານ ໒ ເວລາ ມີຜົນສະເໝີກັນ

ເມື່ອຕໍ່ມາ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ອານົນ ຫາກຈະມີໃຜມາກ່າວໃຫ້ນາຍຈຸນທະກຳມາຣະບຸດເດືອດຮ້ອນໃຈວ່າ ທ່ານຈຸນທະ ການທີ່ພຣະຕະຖາຄົດສະເຫວີຍບິນທະບາດຂອງທ່ານເປັນຄັ້ງສຸດທ້າຍແລ້ວ ສະເດັດດັບຂັນທະປະຣິນິບພານ ບໍ່ແມ່ນລາບຂອງທ່ານ ທ່ານໄດ້ຊົ່ວແລ້ວ ອານົນ ທ່ານເພິ່ງລະງັບຄວາມເດືອດຮ້ອນໃຈຂອງນາຍຈຸນທະກຳມາຣະບຸດແບບນີ້ ວ່າ

ທ່ານຈຸນທະ ການທີ່ພຣະຕະຖາຄົດສະເຫວີຍບິນທະບາດຂອງທ່ານເປັນຄັ້ງສຸດທ້າຍແລ້ວສະເດັດດັບຂັນທະປະຣິນິບພານ ເປັນລາບຂອງທ່ານ ທ່ານໄດ້ດີແລ້ວ ທ່ານຈຸນທະ ຄວາມຂໍ້ນີ້ ອາຕະມາພາບໄດ້ຟັງມາ ໄດ້ຮັບມາສະເພາະພຣະພັກຂອງພຣະຜູ້ມີພຣະພາກເຈົ້າວ່າ ບິນທະບາດ ໒ ເວລາ ມີຜົນສະເໝີກັນ ມີວິບາກສະເໝີກັນ ມີຜົນຫຼາຍກວ່າແລະມີອານິສົງຫຼາຍກວ່າບິນທະບາດອື່ນ

ບິນທະບາດ ໒ ເວລາ ອັນໃດແດ່ ຄື

໑. ບິນທະບາດທີ່ພຣະຕະຖາຄົດສະເຫວີຍແລ້ວຕັດສະຣູ້ສຳມາສຳໂພທິຍານອັນປະເສີດ

໒. ບິນທະບາດທີ່ພຣະຕະຖາຄົດສະເຫວີຍແລ້ວປະຣິນິບພານດ້ວຍອະນຸປາທິເສສະນິບພານທາດ

ບິນທະບາດ ໔ ເວລານີ້ ມີຜົນສະເໝີກັນ ມີວິບາກສະເໝີກັນ ມີຜົນຫຼາຍກວ່າແລະມີ ອານິສົງຫຼາຍກວ່າບິນທະບາດອື່ນ

ນາຍຈຸນທະກຳມາຣະບຸດໄດ້ສັ່ງສົມກຸສົນກຳທີ່ເປັນເຫດໃຫ້ມີອາຍຸຍືນ ມີຜິວພັນຜ່ອງໃສ ມີຄວາມສຸກ ເກີດໃນສະຫວັນ ຈະເລີນດ້ວຍລາບຍົດ ເປັນໃຫຍ່ຍິ່ງແລ້ວ ອານົນ ທ່ານເພິ່ງລະງັບຄວາມເດືອດຮ້ອນໃຈຂອງນາຍຈຸນທະກຳມາຣະບຸດແນວນີ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານ**

ຜູ້ໃຫ້ທານ ຍ່ອມເພີ່ມພູນບຸນ
ຜູ້ສັງລວມ (ໃນສິນ) ຍ່ອມບໍ່ກໍ່ເວນ
ສ່ວນຜູ້ສະຫຼາດ ຍ່ອມລະບາບໄດ້
ຍ້ອນສິ້ນຣາຄະ ໂທສະ ແລະໂມຫະ
ຜູ້ນັ້ນຈຶ່ງຊື່ວ່າປະຣິນິບພານແລ້ວ

**ຈຸນທະສູດທີ ໕ ຈົບ**

## ໖. ປາຕະລິຄາມິຍະສູດ[1]

## ວ່າດ້ວຍອຸປາສົກຊາວປາຕະລິຄາມ

[໗໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນມະຄົດ ພ້ອມດ້ວຍພິກຂຸສົງ ໝູ່ໃຫຍ່ ໄດ້ສະເດັດມາເຖິງປາຕະລິຄາມ

ອຸປາສົກອຸປາສິກາຊາວປາຕະລິຄາມໄດ້ຮູ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປ ໃນແຄວ້ນມະຄົດພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດມາເຖິງປາຕະລິຄາມແລ້ວ ຈຶ່ງພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນຂໍພຣະຜູ້ມີພຣະພາກເຈົ້າໂຜດຮັບອາຄານທີ່ພັກຂອງຂ້າພຣະອົງທັງຫຼາຍເທີ້ນຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຊົງຮັບດ້ວຍພຣະອາການດຸດສະນີ

ລຳດັບນັ້ນ ອຸປາສົກອຸປາສິກາຊາວປາຕະລິຄາມຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວຈຶ່ງພາກັນລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວພາກັນຍ່າງໄປສູ່ອາຄານທີ່ພັກ ປູລາດອາສະນະທົ່ວອາຄານ ຈັດອາສະນະ ຕັ້ງໝໍ້ນ້ຳ ເຍືອງໄຟນ້ຳມັນໄວ້ແລ້ວກັບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍປູລາດອາສະນະ ກັ້ງເພດານທົ່ວອາຄານບ່ອນພັກ ຈັດອາສະນະ ຕັ້ງໝໍ້ນ້ຳ ເຍືອງໄຟນ້ຳມັນໄວ້ແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ ຂ້ານ້ອຍ

ຄັ້ງນັ້ນ ເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດໄປທີ່ອາຄານບ່ອນພັກ ພ້ອມກັບພິກຂຸສົງ ຊົງຊຳຣະພຣະບາດແລ້ວສະເດັດເຂົ້າໄປສູ່ອາຄານທີ່ພັກ ປະທັບນັ່ງອີງເສົາກາງ ອວ່າຍໜ້າໄປທາງທິດຕາເວັນອອກ ແມ່ນພິກຂຸສົງ ກໍລ້າງຕີນແລ້ວເຂົ້າໄປສູ່ອາຄານບ່ອນພັກ ນັ່ງອີງຝາດ້ານທິດຕາເວັນຕົກ ອວ່າຍໜ້າໄປທາງທິດຕາເວັນອອກຫ້ອມລ້ອມພຣະຜູ້ມີພຣະພາກເຈົ້າ ແມ່ນອຸປາສົກອຸປາສິກາຊາວປາຕະລິຄາມກໍລ້າງຕີນແລ້ວເຂົ້າໄປສູ່ອາຄານບ່ອນພັກນັ້ນ ນັ່ງອີງຝາດ້ານທິດຕາເວັນອອກ ອວ່າຍໜ້າໄປທາງທິດຕາເວັນຕົກຫ້ອມລ້ອມພຣະຜູ້ມີພຣະພາກເຈົ້າ

## ໂທດແຫ່ງສີນວິບັດ ໕ ປະການ[໑]

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດກັບອຸປາສົກອຸປາສິກາຊາວປາຕະລິຄາມວ່າ ຄະຫະບໍດີທັງຫຼາຍ ສີນວິບັດຂອງບຸກຄົນຜູ້ທຸສີນມີໂທດ ໕ ປະການນີ້ ໂທດ ໕ ປະການ ຄື

໑. ບຸກຄົນຜູ້ທຸສີນ ມີສີນວິບັດໃນໂລກນີ້ ຍ່ອມເຖິງຄວາມເສື່ອມໂພຄະຊັບຫຼວງຫຼາຍເຊິ່ງມີຄວາມຜະໝາດເປັນເຫດ ນີ້ເປັນໂທດປະການທີ ໑ ແຫ່ງສີນວິບັດຂອງບຸກຄົນຜູ້ທຸສີນ

໒. ກິດຕິສັບອັນຊົ່ວຂອງບຸກຄົນຜູ້ທຸສີນ ມີສີນວິບັດ ຍ່ອມກະຈາຍໄປ ນີ້ເປັນໂທດທີ ໒ ແຫ່ງສີນວິບັດຂອງບຸກຄົນຜູ້ທຸສີນ

໓. ບຸກຄົນຜູ້ທຸສີນ ມີສີນວິບັດ ຈະເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ຍ່ອມບໍ່ແກ່ກ້າ ເກີ້ເຂີນເຂົ້າໄປ ນີ້ເປັນໂທດປະການທີ ໓ ແຫ່ງສີນວິບັດ ຂອງບຸກຄົນຜູ້ທຸສີນ

໔. ບຸກຄົນຜູ້ທຸສິນ ມີສິນວິບັດ ຍ່ອມຫຼົງລືມສະຕິຕາຍ ນີ້ເປັນໂທດປະການທີ່ ໔ ແຫ່ງສິນວິບັດຂອງບຸກຄົນຜູ້ທຸສິນ

໕. ບຸກຄົນຜູ້ທຸສິນ ມີສິນວິບັດ ຫຼັງຈາກຕາຍແລ້ວ ຍ່ອມໄປບັງເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ນີ້ເປັນໂທດປະການທີ ໕ ແຫ່ງສິນວິບັດຂອງບຸກຄົນຜູ້ທຸສິນ

ຄະຫະບໍດີທັງຫຼາຍ ສິນວິບັດຂອງບຸກຄົນຜູ້ທຸສິນມີໂທດ ໕ ປະການນີ້ແລ

## ອານິສົງແຫ່ງສິນສົມບັດ ໕ ປະການ

ຄະຫະບໍດີທັງຫຼາຍ ສິນສົມບັດຂອງບຸກຄົນຜູ້ມີສິນ ມີອານິສົງ ໕ ປະການນີ້ ອານິສົງ ໕ ປະການ ຄື

໑. ບຸກຄົນຜູ້ມີສິນ ມີສິນສົມບັດໃນໂລກນີ້ ຍ່ອມໄດ້ໂພຄະຊັບຫຼວງຫຼາຍ ເຊິ່ງມີຄວາມບໍ່ພະໝາດເປັນເຫດ ນີ້ເປັນອານິສົງປະການທີ ໑ ແຫ່ງສິນສົມບັດຂອງບຸກຄົນຜູ້ມີສິນ

໒. ກິດຕິສັບອັນງາມຂອງບຸກຄົນຜູ້ມີສິນ ມີສິນສົມບັດ ຍ່ອມຊ່າລືໄປ ນີ້ເປັນອານິສົງປະການທີ ໒ ແຫ່ງສິນສົມບັດຂອງບຸກຄົນຜູ້ມີສິນ

໓. ບຸກຄົນຜູ້ມີສິນ ມີສິນສົມບັດ ຈະເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດ ກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ຫຼືສະມະນະບໍລິສັດກໍຕາມ ຍ່ອມແກ່ກ້າ ບໍ່ເກີ້ເຂີນເຂົ້າໄປ ນີ້ເປັນອານິສົງປະການທີ ໓ ແຫ່ງສິນສົມບັດຂອງບຸກຄົນຜູ້ມີສິນ

໔. ບຸກຄົນຜູ້ມີສິນ ມີສິນສົມບັດ ຍ່ອມບໍ່ຫຼົງລືມສະຕິຕາຍ ນີ້ເປັນອານິສົງປະການທີ ໔ ແຫ່ງສິນສົມບັດຂອງບຸກຄົນຜູ້ມີສິນ

໕. ບຸກຄົນຜູ້ມີສິນ ມີສິນສົມບັດ ຫຼັງຈາກຕາຍແລ້ວຍ່ອມໄປເກີດໃນສຸກຄະຕິໂລກສະຫວັນ ນີ້ເປັນອານິສົງປະການທີ ໕ ແຫ່ງສິນສົມບັດຂອງບຸກຄົນຜູ້ມີສິນ

ຄະຫະບໍດີທັງຫຼາຍ ສິນສົມບັດຂອງບຸກຄົນຜູ້ມີສິນມີອານິສົງ ໕ ປະການນີ້ແລ

ຫຼັງຈາກນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ອຸປາສົກອຸປາສິກາຊາວປາຕະລິຄາມ ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາຈົນເດິກດື່ນແລ້ວຊົງສົ່ງກັບດ້ວຍຮັບສັ່ງວ່າ ຄະຫະບໍດີທັງຫຼາຍ ຣາຕີໃກ້ຈະສະຫວ່າງ ຂໍທ່ານທັງຫຼາຍ ຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ

ລຳດັບນັ້ນ ອຸປາສົກອຸປາສິກາຊາວປາຕະລິຄາມຕ່າງຊື່ນຊົມອະນຸໂມທະນາພຣະທຳເທດສະໜາ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງ ແລ້ວລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ ເມື່ອອຸປາສົກອຸປາສິກາຊາວປາຕະລິຄາມຈາກໄປບໍ່ດົນ ພຣະຜູ້ມີພຣະພາກເຈົ້າກໍສະເດັດເຂົ້າໄປສູ່ເຮືອນວ່າງ

## ສ້າງເມືອງປາຕະລີບຸດ

ສະໄໝນັ້ນ ສຸນີທະແລະວັດສະກາຣະຜູ້ເປັນມະຫາອຳມາດແຫ່ງມະຄົດຣັດ ກຳລັງສ້າງເມືອງປາຕະລິຄາມເພື່ອປ້ອງກັນພວກວັດຊີ ຄັ້ງນັ້ນ ເທວະດາຈຳນວນຫຼາຍນັບເປັນພັນ ກຳລັງຢຶດຄອງທີ່ດິນໃນປາຕະລິຄາມ ຄື

ເທວະດາທີ່ມີສັກໃຫຍ່ຢຶດຄອງທີ່ດິນໃນພື້ນທີ່ໃດ ຈິດຂອງພຣະຣາຊາ ແລະມະຫາອຳມາດຂອງພຣະຣາຊາທີ່ມີສັກໃຫຍ່ ຕ່າງກໍນ້ອມໄປເພື່ອສ້າງນິເວດໃນພື້ນທີ່ນັ້ນ[១]

ເທວະດາທີ່ມີສັກຊັ້ນກາງຢຶດຄອງທີ່ດິນໃນພື້ນທີ່ໃດຈິດຂອງພຣະຣາຊາແລະມະຫາອຳມາດຂອງ ພຣະຣາຊາທີ່ມີສັກຊັ້ນກາງ ຕ່າງກໍນ້ອມໄປເພື່ອສ້າງນິເວດໃນພື້ນທີ່ນັ້ນ

ເທວະດາທີ່ມີສັກຊັ້ນຕ່ຳຢຶດຄອງທີ່ດິນໃນພື້ນທີ່ໃດຈິດຂອງພຣະຣາຊາແລະມະຫາອຳມາດຂອງພຣະຣາຊາທີ່ມີສັກຊັ້ນຕ່ຳ ຕ່າງກໍນ້ອມໄປເພື່ອສ້າງນິເວດໃນພື້ນທີ່ນັ້ນ

ພຣະຜູ້ມີພຣະພາກເຈົ້າຊົງເລັງທິບພະຈັກຂຸອັນບໍລິສຸດເໜືອມະນຸດໄດ້ທອດພຣະເນດເຫັນເທວະດາເຫຼົ່ານັ້ນນັບເປັນພັນ ກຳລັງຢຶດຄອງທີ່ດິນໃນປາຕະລິຄາມ ຄື ເທວະດາທີ່ມີ ສັກໃຫຍ່ຢຶດຄອງທີ່ດິນໃນພື້ນທີ່ໃດ ຈິດຂອງພຣະຣາຊາ ແລະມະຫາອຳມາດຂອງພຣະຣາຊາ ທີ່ມີສັກໃຫຍ່ຕ່າງກໍນ້ອມໄປເພື່ອສ້າງນິເວດໃນພື້ນທີ່ນັ້ນ ເທວະດາທີ່ມີສັກຊັ້ນກາງ ຢຶດຄອງທີ່ດິນໃນພື້ນທີ່ໃດ ຈິດຂອງພຣະຣາຊາແລະມະຫາອຳມາດຂອງພຣະຣາຊາທີ່ມີສັກຊັ້ນກາງຕ່າງກໍນ້ອມໄປເພື່ອສ້າງນິເວດໃນພື້ນທີ່ນັ້ນເທວະດາທີ່ມີສັກຊັ້ນຕ່ຳຢຶດຄອງທີ່ດິນໃນພື້ນທີ່ໃດ ຈິດຂອງພຣະຣາຊາແລະມະຫາອຳມາດຂອງພຣະຣາຊາທີ່ມີສັກຊັ້ນຕ່ຳ ຕ່າງກໍນ້ອມໄປເພື່ອສ້າງນິເວດໃນພື້ນທີ່ນັ້ນ

ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງຕື່ນບັນທົມໃນເວລາໃກ້ຮຸ່ງ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ອານົນ ໃຜກຳລັງສ້າງເມືອງໃນປາຕະລິຄາມ

ທ່ານພຣະອານົນຂາບທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ສຸນີທະແລະວັດສະກາຣະ ຜູ້ເປັນມະຫາອຳມາດແຫ່ງມະຄົດຣັດ ກຳລັງສ້າງເມືອງໃນປາຕະລິຄາມເພື່ອປ້ອງກັນພວກວັດຊີ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ສຸນີທະ ແລະວັດສະກາຣະຜູ້ເປັນມະຫາອຳມາດແຫ່ງມະຄົດຣັດກຳລັງສ້າງເມືອງໃນປາຕະລິຄາມເພື່ອປ້ອງກັນພວກວັດຊີ ຄື ໄດ້ເປີກສາກັບເທວະດາ ຊັ້ນຕາວະຕິງສາ ອານົນ ໃນທີ່ນີ້ ເຮົາເລັງທິບພະຈັກຂຸອັນບໍລິສຸດເໜືອມະນຸດ ໄດ້ເຫັນເທວະດາຈຳນວນຫຼາຍ ນັບເປັນພັນ ກຳລັງຢຶດຄອງທີ່ດິນໃນປາຕະລິຄາມ ຄື ເທວະດາທີ່ມີສັກໃຫຍ່ ຢຶດຄອງທີ່ດິນໃນພື້ນທີ່ໃດ ຈິດຂອງພຣະຣາຊາແລະມະຫາອຳມາດຂອງພຣະຣາຊາທີ່ມີສັກໃຫຍ່ ຕ່າງກໍນ້ອມໄປເພື່ອສ້າງນິເວດໃນພື້ນທີ່ນັ້ນ ເທວະດາທີ່ມີສັກຊັ້ນກາງຢຶດຄອງທີ່ດິນ ໃນພື້ນທີ່ໃດ ຈິດຂອງພຣະຣາຊາ ແລະມະຫາອຳມາດຂອງພຣະຣາຊາທີ່ມີສັກຊັ້ນກາງຕ່າງກໍ ນ້ອມໄປເພື່ອສ້າງນິເວດໃນພື້ນທີ່ນັ້ນ ເທວະດາທີ່ມີສັກຊັ້ນຕ່ຳຢຶດຄອງທີ່ດິນໃນພື້ນທີ່ໃດ ຈິດຂອງພຣະຣາຊາແລະມະຫາອຳມາດຂອງພຣະຣາຊາທີ່ມີສັກຊັ້ນຕ່ຳຕ່າງກໍນ້ອມໄປເພື່ອສ້າງນິເວດໃນພື້ນທີ່ນັ້ນ

ອານົນ ຕະຫຼອດພື້ນທີ່ອັນເປັນຍ່ານຊຸມຊົນແຫ່ງອາຣະຍະຊົນ ແລະເປັນທາງຄ້າຂາຍນະຄອນນີ້ຈະເປັນນະຄອນຊັ້ນເອກ ເປັນທຳເລຄ້າຂາຍຊື່ປາຕະລິບຸດ ແລະນະຄອນປາຕະລິບຸດຈະເກີດອັນຕະລາຍ ໓ ຢ່າງ ຄື ອັກຄີໄພ ອຸທະກະໄພ ຫຼືການແຕກຄວາມສາມັກຄີພາຍໃນກຸ່ມ

## ສອງມະຫາອຳມາດລ້ຽງພຣະ

ຄັ້ງນັ້ນ ສຸນີທະແລະວັດສະກາຣະຜູ້ເປັນມະຫາອຳມາດແຫ່ງມະຄົດຣັດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວໄດ້ຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າຂໍພຣະໂຄດົມຜູ້ຈະເລີນພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງຂ້າພຣະອົງທັງຫຼາຍໃນມື້ນີ້ເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນດ້ວຍພຣະອາການດຸດສະນີ

ສຸນີທະແລະວັດສະກາຣະມະຫາອຳມາດແຫ່ງມະຄົດຣັດ ຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງເຂົ້າໄປສູ່ບ່ອນພັກຂອງຕົນ ແລ້ວສັ່ງໃຫ້ຈັດກຽມຂອງຫຍ້ຳຂອງສັນອັນປະນີດໄວ້ໃນບ່ອນພັກຂອງຕົນແລ້ວສົ່ງຄົນໄປຂາບທູນພັດການວ່າ ຂ້າແດ່ພຣະໂຄດົມຜູ້ຈະເລີນໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ ຂ້ານ້ອຍ

ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນພ້ອມດ້ວຍພິກຂຸສົງ ສະເດັດເຂົ້າໄປສູ່ບ່ອນພັກຂອງສຸນີທະແລະວັດສະກາຣະມະຫາອຳມາດ

ແຫ່ງມະຄົດຣັດ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ລຳດັບນັ້ນ ສຸນິທະແລະວັດສະກາຣະມະຫາອຳມາດແຫ່ງມະຄົດຣັດໄດ້ນຳຂອງຫຍ້ຳຂອງສັນອັນປະນີດມາປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານ ໃຫ້ອີ່ມໜຳດ້ວຍຕົນເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດ ຊົງລະພຣະຫັດຈາກບາດແລ້ວ ໄດ້ນັ່ງເຝົ້າຢູ່ບ່ອນທີ່ສົມຄວນ ບ່ອນໃດບ່ອນໜຶ່ງເຊິ່ງຕ່ຳກວ່າ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາແກ່ສຸນິທະແລະວັດສະກາຣະມະຫາອຳມາດແຫ່ງມະຄົດຣັດ ດ້ວຍພຣະຄາຖາເຫຼົ່ານີ້ວ່າ

## ອະນຸໂມທະນາຄາຖາ

ບັນດິດຢູ່ໃນບ່ອນໃດ ລ້ຽງດູທ່ານຜູ້ມີສິນ
ຜູ້ສັງລວມ ປະພຶດພົມມະຈັນ ໃນບ່ອນທີ່ຕົນຢູ່ນັ້ນ
ເພິ່ງອຸທິດທັກຂິນາແກ່ເຫຼົ່າເທວະດາຜູ້ສະຖິດຢູ່ໃນບ່ອນນັ້ນ
ເທວະດາເຫຼົ່ານັ້ນອັນເຂົາບູຊາແລ້ວ ຍ່ອມບູຊາຕອບ
ອັນເຂົານັບຖືແລ້ວ ຍ່ອມນັບຖືຕອບ
ຈາກນັ້ນຍ່ອມອະນຸເຄາະບັນດິດນັ້ນເປັນການຕອບແທນ
ຄືມານດາອະນຸເຄາະບຸດຜູ້ເກີດແຕ່ອົກຕົນ ສັນນັ້ນ
ດັ່ງນັ້ນ ຜູ້ທີ່ເທວະດາອະນຸເຄາະແລ້ວ
ຍ່ອມພົບເຫັນແຕ່ສິ່ງທີ່ຈະເລີນທຸກເມື່ອ

## ປະຕູໂຄດົມແລະທ່າໂຄດົມ

ພຣະຜູ້ມີພຣະພາກເຈົ້າ ເມື່ອຊົງອະນຸໂມທະນາມະຫາອຳມາດສຸນິທະແລະມະຫາອຳມາດວັດສະກາຣະແຄວ້ນມະຄົດດ້ວຍພຣະຄາຖາເຫຼົ່ານີ້ແລ້ວ ຊົງລຸກຂຶ້ນຈາກອາສະນະສະເດັດຈາກໄປ ສະໄໝນັ້ນ ມະຫາອຳມາດສຸນິທະແລະມະຫາອຳມາດວັດສະກາຣະແຄວ້ນມະຄົດຕາມສົ່ງສະເດັດພຣະຜູ້ມີພຣະພາກ ເຈົ້າໄປເບື້ອງພຣະປຣິດສະດາງດ້ວຍຄິດວ່າ ມື້ນີ້ ປະຕູທີ່ທ່ານພຣະສະມະນະໂຄດົມສະເດັດອອກໄປ ຈະໄດ້ຊື່ວ່າ ປະຕູໂຄດົມ ທ່າທີ່ພຣະອົງສະເດັດຂ້າມແມ່ນ້ຳຄົງຄາ ຈະໄດ້ຊື່ວ່າ ທ່າພຣະໂຄດົມ

ຕໍ່ມາ ປະຕູທີ່ພຣະຜູ້ມີພຣະພາກເຈົ້າສະເດັດຜ່ານໄປນັ້ນໄດ້ຜາກົດນາມວ່າ ປະຕູພຣະໂຄດົມ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດໄປທາງແມ່ນ້ຳຄົງຄາ ເວລານັ້ນ ແມ່ນ້ຳຄົງຄາມີນ້ຳເຕັມ ພຽງຕາຝັ່ງ ນົກກາພໍດື່ມກິນໄດ້ ຄົນທັງຫຼາຍຜູ້ປາຖະໜາຈະຂ້າມຟາກ ລາງພວກທ່ຽວຫາເຮືອ ລາງພວກທ່ຽວຫາແພ ລາງພວກມັດທຸ່ນ ພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງ ຊົງ

ຫາຍໄປຈາກຝັ່ງນີ້ແຫ່ງແມ່ນ້ຳຄົງຄາ ໄປຜາກົດພຣະວໍຣະກາຍທີ່ຝັ່ງນັ້ນ ຄືບຸຣຸດມີກຳລັງຢຽດແຂນ ອອກຫຼືຄູ້ແຂນເຂົ້າ ສັນນັ້ນ

ພຣະຜູ້ມີພຣະພາກເຈົ້າທອດພຣະເນດເຫັນຄົນເຫຼົ່ານັ້ນ ຜູ້ປາຖະໜາຈະຂ້າມຟາກ ລາງພວກຫຽວຫາເຮືອ ລາງພວກຫຽວຫາແພ ລາງພວກມັດທຸ່ນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານ

ຄົນພວກໜຶ່ງກຳລັງສ້າງຂົວ
ຂ້າມສະໃຫຍ່ ໂດຍບໍ່ໃຫ້ເປິເປື້ອນດ້ວຍຕົມ
ຂະນະທີ່ຄົນອີກພວກໜຶ່ງກຳລັງມັດທຸ່ນຢູ່
ຊົນຜູ້ສະຫຼາດໄດ້ຂ້າມພົ້ນໄປແລ້ວ[໑]

**ປາຕະລິຄາມິຍະສູດທີ ໖ ຈົບ**

## ໗. ທະວິທາປະຖະສູດ

## ວ່າດ້ວຍທາງສອງແຍກ

[໗໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ສະເດັດພຸດທະດຳເນີນທາງໄກໄປໃນແຄວ້ນໂກສົນ ມີທ່ານພຣະນາກສະມາລະເປັນປັດສາສະມະນະ[໑] ທ່ານພຣະນາກສະມາລະໄດ້ເຫັນທາງສອງແຍກໃນລະຫວ່າງທາງ ຈຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າຜູ້ຈະເລີນ ນີ້ຄື ທາງທີ່ຈະໄປ ໄປທາງນີ້ເທີ້ນ ຂ້ານ້ອຍ ເມື່ອທ່ານພຣະນາກສະມາລະຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະນາກສະມາລະດັ່ງນີ້ວ່າ ນາກສະມາລະນີ້ຄືທາງທີ່ຈະໄປ ເຮົາຈະໄປທາງນີ້

ແມ່ນເທື່ອທີ ໔ ທ່ານພຣະນາກສະມາລະໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະຜູ້ມີພຣະພາກເຈົ້າຜູ້ຈະເລີນ ນີ້ຄືທາງທີ່ຈະໄປ ໄປທາງນີ້ເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະນາກສະມາລະດັ່ງນີ້ວ່າ ນາກສະມາລະ ນີ້ຄືທາງທີ່ຈະໄປ ເຮົາຈະໄປທາງນີ້

ແມ່ນເທື່ອທີ ໓ ທ່ານພຣະນາກສະມາລະໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະຜູ້ມີພຣະພາກເຈົ້າຜູ້ຈະເລີນ ນີ້ຄືທາງທີ່ຈະໄປ ໄປທາງນີ້ເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າກໍໄດ້ຕັດກັບທ່ານພຣະນາກສະມາລະດັ່ງນີ້ວ່າ ນາກສະມາລະ ນີ້ຄືທາງທີ່ຈະໄປ ເຮົາຈະໄປທາງນີ້

ຄັ້ງນັ້ນ ທ່ານພຣະນາກສະມາລະວາງບາດແລະຈີວອນຂອງພຣະຜູ້ມີພຣະພາກເຈົ້າໄວ້ທີ່ພື້ນດິນ ທີ່ທາງນັ້ນເອງແລ້ວຂາບທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ນີ້ບາດແລະຈີວອນຂອງພຣະຜູ້ມີພຣະພາກ ເຈົ້າ ແລ້ວຈາກໄປ ເມື່ອທ່ານພຣະນາກສະມາລະຍ່າງໄປຕາມທາງນັ້ນ ພວກໂຈນທີ່ຈອບຊຸ່ມຢູ່ລະຫວ່າງທາງ ໄດ້ອອກມາຣຸມທຳຮ້າຍທັງເຕະທັງຕີ ທຸບບາດແຕກ ແລະຈີກຜ້າສັງຄາຕິຂາດ ຫຼັງຈາກນັ້ນ ທ່ານພຣະນາກສະມາລະມີບາດແຕກ ມີຜ້າສັງຄາຕິຂາດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ເມື່ອຂ້າພຣະອົງຍ່າງໄປຕາມທາງນັ້ນ ພວກໂຈນທີ່ຈອບຊຸ່ມຢູ່ລະຫວ່າງທາງ ໄດ້ອອກມາຣຸມທຳຮ້າຍທັງເຕະທັງຕີ ທຸບບາດແຕກ ແລະຈີກຜ້າສັງຄາຕິຂາດ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

### ພຸດທະອຸທານ

ບຸກຄົນຜູ້ຈົບເວດ[១] ເຖິງຈະທ່ຽວໄປນຳກັນ
ຢູ່ຮ່ວມກັນ ປະປົນກັບຄົນອື່ນ
ຮູ້ແຈ້ງ (ຄົນຊົ່ວ) ຍ່ອມລະຄົນຊົ່ວໄປໄດ້
ຄືນົກກະຮຽນເວັ້ນນ້ຳ ດື່ມແຕ່ນ້ຳນົມ ສັນນັ້ນ

**ທະວິທາປະຖະສູດທີ ໗ ຈົບ**

## ໘. ວິສາຂາສູດ

## ວ່າດ້ວຍນາງວິສາຂາ

[໗໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຜາສາດໃນບຸບພາຣາມຂອງນາງວິສາຂາ ມິຄາຣະມາຕາ ເຂດນະຄອນສາວັດຖີ ສະໄໝນັ້ນ ຫຼານສາວຜູ້ເປັນທີ່ຮັກ ທີ່ພໍໃຈຂອງນາງວິ

ສາຂາ ມີຄາຣະມາຕາເສຍຊີວິດລົງ ຄັ້ງນັ້ນ ນາງວິສາຂາມີຄາຣະມາຕາມີຜ້າປຽກ ຜົມປຽກ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແຕ່ທ່ຽງວັນ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມນາງວິສາຂາມີຄາຣະມາຕາດັ່ງນີ້ວ່າ ວິສາຂາ ທ່ານມາຈາກໃສ ຈຶ່ງມີຜ້າປຽກ ຜົມປຽກ ເຂົ້າມາບ່ອນນີ້ແຕ່ທ່ຽງວັນ

ນາງວິສາຂາທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຫຼານສາວຜູ້ເປັນທີ່ຮັກ ທີ່ພໍໃຈ ຂອງຂ້ານ້ອຍເສຍຊີວິດແລ້ວ ຈຶ່ງເຮັດໃຫ້ຂ້ານ້ອຍມີຜ້າປຽກ ຜົມປຽກ ເຂົ້າມາບ່ອນນີ້ແຕ່ທ່ຽງວັນຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ວິສາຂາ ທ່ານຕ້ອງການມີບຸດ ແລະຫຼານຈຳນວນທໍ່ກັບ ຊາວນະຄອນສາວັດຖີບໍ?

ນາງວິສາຂາທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍຕ້ອງການມີບຸດແລະຫຼານຈຳນວນທໍ່ກັບຊາວນະຄອນສາວັດຖີ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ວິສາຂາ ຊາວນະຄອນສາວັດຖີເສຍຊີວິດລົງ ແຕ່ລະມື້ ຫຼາຍທໍ່ໃດ?

ນາງວິສາຂາທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຊາວນະຄອນສາວັດຖີເສຍຊີວິດລົງແຕ່ລະມື້ ໑໐ ຄົນແດ່ ໙ ຄົນແດ່ ໘ ຄົນແດ່ ໗ ຄົນແດ່ ໖ ຄົນແດ່ ໕ ຄົນແດ່ ໔ ຄົນແດ່ ໓ ຄົນແດ່ ໒ ຄົນແດ່ ໑ ຄົນແດ່ ນະຄອນສາວັດຖີຈະບໍ່ວ່າງເວັ້ນຈາກຄົນທີ່ເສຍຊີວິດເລີຍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ວິສາຂາ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ທ່ານບໍ່ຕ້ອງມີຜ້າປຽກ ຜົມປຽກ ທຸກຄັ້ງທຸກເວລາບໍ?

ນາງວິສາຂາທູນຕອບວ່າ ບໍ່ເຖິງຂະໜາດນັ້ນດອກ ຂ້ານ້ອຍ ມີລູກ ແລະ ຫຼານຫຼາຍຂະໜາດນັ້ນ ຂ້ານ້ອຍກໍພໍໃຈແລ້ວ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິສາຂາ ຜູ້ມີສິ່ງເປັນທີ່ຮັກ ໑໐໐ ກໍມີທຸກ ໑໐໐ ຜູ້ມີສິ່ງເປັນທີ່ຮັກ ໙໐ ກໍມີທຸກ ໙໐ ຜູ້ມີສິ່ງເປັນທີ່ຮັກ ໘໐ ກໍມີທຸກ ໘໐ ຜູ້ມີສິ່ງເປັນທີ່ຮັກ ໗໐ ກໍມີທຸກ ໗໐ ຜູ້ມີສິ່ງເປັນທີ່ຮັກ ໖໐ ກໍມີທຸກ ໖໐ ຜູ້ມີສິ່ງເປັນທີ່ຮັກ ໕໐ ກໍມີທຸກ ໕໐ ຜູ້ມີສິ່ງເປັນທີ່ຮັກ ໔໐ ກໍມີທຸກ ໔໐ ຜູ້ມີສິ່ງເປັນທີ່ຮັກ ໓໐ ກໍມີທຸກ ໓໐ ຜູ້ມີສິ່ງເປັນທີ່ຮັກ ໒໐ ກໍມີທຸກ ໒໐ ຜູ້ມີສິ່ງເປັນທີ່ຮັກ ໑໐ ກໍມີທຸກ ໑໐ ຜູ້ມີສິ່ງເປັນທີ່ຮັກ ໙ ກໍມີ ທຸກ ໙ ຜູ້ມີສິ່ງເປັນທີ່ຮັກ ໘ ກໍມີທຸກ ໘ ຜູ້ມີສິ່ງເປັນທີ່ຮັກ ໗ ກໍມີທຸກ ໗ ຜູ້ມີສິ່ງເປັນ ທີ່ຮັກ ໖ ກໍມີທຸກ ໖ ຜູ້ມີສິ່ງເປັນທີ່ຮັກ ໕ ກໍມີທຸກ ໕ ຜູ້ມີສິ່ງເປັນທີ່ຮັກ ໔ ກໍມີທຸກ ໔ ຜູ້ມີສິ່ງເປັນທີ່ຮັກ ໓ ກໍມີທຸກ ໓ ຜູ້ມີສິ່ງເປັນທີ່ຮັກ ໒ ກໍມີທຸກ ໒ ຜູ້ມີ

ສິ່ງເປັນທີ່ຮັກໜຶ່ງ ໑ ກໍມີທຸກໜຶ່ງ ໑ ຜູ້ບໍ່ມີສິ່ງເປັນທີ່ຮັກ ກໍບໍ່ມີທຸກ ເຊິ່ງເຮົາຮຽກວ່າ ຜູ້ໝົດຄວາມໂສກ ປາສະຈາກກິເລດຄືທຸລີ ບໍ່ມີຄວາມຄັບແຄ້ນໃຈ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນ ວ່າ

**ພຸດທະອຸທານ**

ຄວາມໂສກ ຄວາມຮ່ຳໄຮ ແລະຄວາມທຸກຫຼາຍ ໆ ມີໃນໂລກນີ້
ຍ່ອມເກີດມີໄດ້ຍ້ອນອາໄສສິ່ງເປັນທີ່ຮັກ
ເມື່ອບໍ່ມີສິ່ງເປັນທີ່ຮັກ ຄວາມໂສກເສົ້າເປັນຕົ້ນເຫຼົ່ານີ້ກໍບໍ່ມີ
ຍ້ອນແນວນັ້ນ ຄົນທີ່ບໍ່ມີສິ່ງເປັນທີ່ຮັກໃນໂລກໃດ ໆ
ຈຶ່ງຊື່ວ່າມີຄວາມສຸກ ປາສະຈາກຄວາມໂສກເສົ້າ
ດັ່ງນັ້ນ ຜູ້ປາຖະໜາຄວາມບໍ່ເສົ້າໂສກ ປາສະຈາກກິເລດຄືທຸລີ
ຈຶ່ງບໍ່ຄວນຍຶດສິ່ງເປັນທີ່ຮັກໃນໂລກໃດ ໆ

**ວິສາຂາສູດທີ ໘ ຈົບ**

## ໙. ປະຖົມທັບພະສູດ
## ວ່າດ້ວຍພຣະທັບພະມັນລະບຸດ ສູດທີ ໑

[໗໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເວລຸວັນ ກະລັນທະກະນິວາປະສະຖານ ເຂດນະຄອນຣາດຊະຄື ຄັ້ງນັ້ນ ທ່ານພຣະທັບພະມັນລະບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະສຸຄົດເຈົ້າ ບັດນີ້ ເຖິງເວລາທີ່ຂ້າພຣະອົງຈະປະຣິນິບພານ ຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ ທັບພະ ທ່ານຈົ່ງກຳນົດເວລາທີ່ສົມຄວນ ໃນບັດນີ້ເທີ້ນ ທັນໃດນັ້ນເອງ ທ່ານພຣະທັບພະມັນລະບຸດກໍລຸກຈາກອາສະນະ ຖວາຍອະພິວາດ ກະທຳປະທັກຂິນແລ້ວ ເຫາະຂຶ້ນໄປໃນອາກາດ ນັ່ງຂັດສະມາທິ ເຂົ້າເຕໂຊກະສິນສະມາບັດ[໑]ຢູ່ກາງອາກາດ ອອກຈາກສະມາບັດແລ້ວຈຶ່ງປະຣິນິບພານ

ຂະນະທີ່ທ່ານພຣະທັບພະມັນລະບຸດເຫາະຂຶ້ນໄປໃນອາກາດ ນັ່ງຂັດສະມາທິ ເຂົ້າເຕໂຊກະສິນສະມາບັດຢູ່ກາງອາກາດ ອອກຈາກສະມາບັດແລ້ວປະຣິນິບພານ ສະຣີຣະຂອງທ່ານຖືກໄຟເຜົາໄໝ້ຢູ່ນັ້ນ ບໍ່ປາກົດວ່າມີເຖົ່າແລະຊີ່ຄວັນເລີຍ ມີອຸປະມາຄືເນີຍໃສ ຫຼື ນ້ຳມັນ ທີ່ຖືກໄຟເຜົາໄໝ້ ບໍ່ພາກົດວ່າມີເຖົ່າແລະຊີ່ຄວັນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລາ ນັ້ນ ວ່າ

**ພຸດທະອຸທານ**

ຮ່າງກາຍໄດ້ແຕກດັບໄປແລ້ວ
ເວທະນາທັງໝົດດັບເຢັນແລ້ວ
ສັນຍາກໍດັບລົງ ສັງຂານທັງຫຼາຍກໍສະງົບລະງັບ
ວິນຍານກໍເຖິງຄວາມດັບສູນ

**ປະຖົມທັບພະສູດທີ ໗ ຈົບ**

## ໑໐. ທຸຕິຍະທັບພະສູດ
## ວ່າດ້ວຍພຣະທັບພະມັນລະບຸດ ສູດທີ ໘

[໗໐] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດດັ່ງນີ້ວ່າ

ພິກຂຸທັງຫຼາຍ ຂະນະທີ່ພຣະທັບພະມັນລະບຸດເຫາະຂຶ້ນໄປໃນອາກາດ ນັ່ງຂັດສະມາທິເຂົ້າເຕໂຊກະສິນສະມາບັດຢູ່ກາງອາກາດ ອອກຈາກສະມາບັດແລ້ວປະຣິນິບພານ ສະຣີຣະຂອງທ່ານຖືກໄຟເຜົາໄໝ້ຢູ່ນັ້ນ ບໍ່ຜາກົດວ່າມີເຖົ່າແລະຂີ້ຄວັນເລີຍ ມີອຸປະມາຄືເນີຍໃສ ຫຼືນ້ຳມັນທີ່ຖືກໄຟເຜົາໄໝ້ບໍ່ປາກົດວ່າມີເຖົ່າແລະຂີ້ຄວັນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ ໃນເວລານັ້ນວ່າ

**ພຸດທະອຸທານ**

ໄຟທີ່ລຸກຮຸ່ງ ຖືກຊ່າງໃຊ້ຄ້ອນເຫຼັກຕີ
ກໍຄ່ອຍ ໆ ມອດດັບເຢັນລົງໄປ
ໃຜ ໆ ຮູ້ບໍ່ໄດ້ວ່າໄຟນັ້ນໄປຢູ່ບ່ອນໃດ ສັນໃດ
ພຣະອະຣະຫັນທັງຫຼາຍ ຜູ້ລຸດພົ້ນໂດຍຖືກຕ້ອງ

ຂ້າມໂອຄະເຄື່ອງຜູກມັດໃນກາມໄດ້ໝົດແລ້ວ
ບັນລຸເຖິງຄວາມສຸກທີ່ບໍ່ຫວັ່ນໄຫວ
ຍ່ອມບໍ່ມີຄະຕິທີ່ຈະບັນຍັດໃຫ້ຮູ້ກັນໄດ້ ສັນນັ້ນ

**ທຸຕິຍະທັບພະສູດທີ ໑໐ ຈົບ**

**ປາຕະລິຄານິຍະວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມນິບພານປະຕິສັງຍຸດຕະສູດ
໒. ທຸຕິຍະນິບພານປະຕິສັງຍຸດຕະສູດ
໓. ຕະຕິຍະນິບພານປະຕິສັງຍຸດຕະສູດ
໔. ຈະຕຸດຖະນິບພານປະຕິສັງຍຸດຕະສູດ
໕. ຈຸນທະສູດ
໖. ປາຕະລິຄານິຍະສູດ
໗. ທະວິທາປະຖະສູດ
໘. ວິສາຂາສູດ
໙. ປະຖົມທັບພະສູດ
໑໐. ທຸຕິຍະທັບພະສູດ

## ລວມຈຳນວນວັກທີ່ມີໃນອຸທານ ຄື

໑. ໂພທິວັກ
໒. ມຸດຈະລິນທະວັກ
໓. ນັນທະວັກ
໔. ເມຄິຍະວັກ
໕. ໂສນະເຖຣະວັກ
໖. ຊັດຈັນທະວັກ
໗. ຈູລະວັກ
໘. ປາຕະລິຄານິຍະວັກ

ທັງ ໘ ວັກນີ້ ມີພຣະສູດທີ່ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງມີພຣະຈັກຂຸຍານ ປາສະຈາກມົນທິນ ຊົງຈຳແນກສະແດງໄວ້ລະອຽດລວມ ໘໐ ສູດ ເຊິ່ງເຫຼົ່າບັນດິດຜູ້ມີສັດທາ ໄດ້ກ່າວ ວັກນັ້ນວ່າອຸທານ ດັ່ງນີ້ແລ

**ອຸທານ ຈົບ**

# ພຣະສູດຕັນຕະປິດົກ

## ຂຸດທະກະນິກາຍ ອິຕິວຸດຕະກະ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ**

# ໑. ເອກກະນິບາດ

## ໑. ປະຖົມວັກ

### ໝວດທີ ໑

## ໑. ໂລພະສູດ

### ວ່າດ້ວຍໂລພະ

[໑] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນ ກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້[໑]

ພິກຂຸທັງຫຼາຍ ທ່ານທັງຫຼາຍລະທໍາແນວໜຶ່ງໄດ້ ເຮົາຂໍຮັບຮອງຄວາມເປັນອະນາຄາມີ ຂອງທ່ານທັງຫຼາຍ

ທໍາແນວໜຶ່ງ ຄື ອັນໃດ?

ພິກຂຸທັງຫຼາຍ ທ່ານທັງຫຼາຍ ລະທໍາແນວໜຶ່ງຄືໂລພະ (ຄວາມຢາກໄດ້) ໄດ້ ເຮົາຂໍຮັບ ຮອງຄວາມເປັນອະນາຄາມີຂອງທ່ານທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າໄດ້ ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດ ຄາຖາປະພັນ ດັ່ງນີ້ ວ່າ

ໂລພະໃດເປັນເຫດໃຫ້ສັດຜູ້ໂລບໄປສູ່ທຸກຄະຕິ
ຜູ້ມີປັນຍາເຫັນແຈ້ງ[໒] ຍ່ອມລະໂລພະນັ້ນໄດ້ຍ້ອນຮູ້ໂດຍຖືກຕ້ອງ
ເມື່ອລະໄດ້ແລ້ວ ຈຶ່ງບໍ່ຕ້ອງຫວນກັບມາເກີດໃນໂລກນີ້ອີກ
ບໍ່ວ່າໃນການໃດ ໆ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ໂລພະສູດທີ ໑ ຈົບ**

# ໘. ໂທສະສູດ
## ວ່າດ້ວຍໂທສະ

[໘] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍລະທຳແນວໜຶ່ງໄດ້ ເຮົາຂໍຮັບຮອງຄວາມເປັນອະນາຄາມີຂອງທ່ານທັງຫຼາຍ

ທຳແນວໜຶ່ງ ຄື ອັນໃດ?

ພິກຂຸທັງຫຼາຍ ທ່ານທັງຫຼາຍ ລະທຳແນວໜຶ່ງ ຄື ໂທສະ (ຄວາມຄິດປະທຸດສະຮ້າຍ) ໄດ້ ເຮົາຂໍຮັບຮອງຄວາມເປັນອະນາຄາມີຂອງທ່ານທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ໂທສະໃດເປັນເຫດໃຫ້ສັດຜູ້ປະທຸດສະຮ້າຍໄປສູ່ທຸກຄະຕິ
ຜູ້ມີປັນຍາເຫັນແຈ້ງ ຍ່ອມລະໂທສະນັ້ນ ໄດ້ຍ້ອນຮູ້ໂດຍຖືກຕ້ອງ
ເມື່ອລະໄດ້ແລ້ວ ຈຶ່ງບໍ່ຕ້ອງຫວນກັບມາເກີດໃນໂລກນີ້ອີກ
ບໍ່ວ່າໃນການໃດ ໆ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ໂທສະສູດທີ ໘ ຈົບ**

# ໙. ໂມຫະສູດ
## ວ່າດ້ວຍໂມຫະ

[໙] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍລະທຳແນວໜຶ່ງໄດ້ ເຮົາຂໍຮັບຮອງຄວາມເປັນອະນາຄາມີຂອງທ່ານທັງຫຼາຍ

ທຳແນວໜຶ່ງ ຄື ອັນໃດ?

ພິກຂຸທັງຫຼາຍ ທ່ານທັງຫຼາຍລະທຳແນວໜຶ່ງຄືໂມຫະ (ຄວາມຫຼົງ) ໄດ້ ເຮົາຂໍຮັບຮອງຄວາມເປັນອະນາຄາມີຂອງທ່ານທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນ ດັ່ງນີ້ ວ່າ

ໂມຫະໃດເປັນເຫດໃຫ້ສັດຜູ້ຫຼົງໄປສູ່ທຸກຄະຕິ
ຜູ້ມີປັນຍາເຫັນແຈ້ງ ຍ່ອມລະໂມຫະນັ້ນໄດ້ຍ້ອນຮູ້ໂດຍຖືກຕ້ອງ
ເມື່ອລະໄດ້ແລ້ວ ຈຶ່ງບໍ່ຕ້ອງຫວນກັບມາເກີດໃນໂລກນີ້ອີກ
ບໍ່ວ່າໃນການໃດ ໆ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ໂມຫະສູດທີ ໓ ຈົບ**

## ๔. ໂກທະສູດ

## ວ່າດ້ວຍຄວາມໂກດ

[๔] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍລະທຳແນວໜຶ່ງໄດ້ ເຮົາຂໍຮັບຮອງຄວາມເປັນອະນາຄາມີຂອງທ່ານທັງຫຼາຍ

ທຳແນວໜຶ່ງ ຄື ອັນໃດ?

ພິກຂຸທັງຫຼາຍ ທ່ານທັງຫຼາຍລະທຳແນວໜຶ່ງຄືໂກທະ (ຄວາມໂກດ)ໄດ້ ເຮົາຂໍຮັບຮອງຄວາມເປັນອະນາຄາມີຂອງທ່ານທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ຄວາມໂກດໃດເປັນເຫດໃຫ້ສັດຜູ້ໂກດໄປສູ່ທຸກຄະຕິ
ຜູ້ມີປັນຍາເຫັນແຈ້ງ ຍ່ອມລະຄວາມໂກດນັ້ນໄດ້ຍ້ອນຮູ້ໂດຍຖືກຕ້ອງ
ເມື່ອລະໄດ້ແລ້ວ ຈຶ່ງບໍ່ຕ້ອງຫວນກັບມາເກີດໃນໂລກນີ້ອີກ
ບໍ່ວ່າໃນການໃດ ໆ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ໂກທະສູດທີ ๔ ຈົບ**

# ໕. ມັກຂະສູດ
## ວ່າດ້ວຍມັກຂະ

[໕] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍລະທຳແນວໜຶ່ງໄດ້ ເຮົາຂໍຮັບຮອງຄວາມເປັນອະນາຄາມີຂອງທ່ານທັງຫຼາຍ

ທຳແນວໜຶ່ງ ຄື ອັນໃດ?

ພິກຂຸທັງຫຼາຍ ທ່ານທັງຫຼາຍລະທຳແນວໜຶ່ງຄືມັກຂະ (ຄວາມລົບຫຼູ່)ໄດ້ ເຮົາຂໍຮັບຮອງຄວາມເປັນອະນາຄາມີຂອງທ່ານທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ມັກຂະໃດ ເປັນເຫດໃຫ້ສັດຜູ້ລົບຫຼູ່ຄຸນທ່ານໄປສູ່ທຸກຄະຕິ
ຜູ້ມີປັນຍາເຫັນແຈ້ງ ຍ່ອມລະມັກຂະນັ້ນໄດ້ຍ້ອນຮູ້ໂດຍຖືກຕ້ອງ
ເມື່ອລະໄດ້ແລ້ວ ຈຶ່ງບໍ່ຕ້ອງຫວນກັບມາເກີດໃນໂລກນີ້ອີກ
ບໍ່ວ່າໃນການໃດ ໆ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ມັກຂະສູດທີ ໕ ຈົບ**

# ໖. ມານະສູດ
## ວ່າດ້ວຍມານະ

[໖] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍລະທຳແນວໜຶ່ງໄດ້ ເຮົາຂໍຮັບຮອງຄວາມເປັນອະນາຄາມີຂອງທ່ານທັງຫຼາຍ

ທຳແນວໜຶ່ງ ຄືອັນໃດ

ພິກຂຸທັງຫຼາຍ ທ່ານທັງຫຼາຍລະທຳແນວໜຶ່ງຄືມານະ (ຄວາມຖືໂຕ)ໄດ້ ເຮົາຂໍຮັບຮອງຄວາມເປັນອະນາຄາມີຂອງທ່ານທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ມານະໃດເປັນເຫດໃຫ້ສັດຜູ້ຖືໂຕໄປສູ່ທຸກຄະຕິ
ຜູ້ມີປັນຍາເຫັນແຈ້ງ ຍ່ອມລະມານະນັ້ນໄດ້ຍ້ອນຮູ້ໂດຍຖືກຕ້ອງ
ເມື່ອລະໄດ້ແລ້ວ ຈຶ່ງບໍ່ຕ້ອງຫວນກັບມາເກີດໃນໂລກນີ້ອີກ
ບໍ່ວ່າໃນການໃດ ໆ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ມານະສູດທີ ໖ ຈົບ**

## ໗. ສັບພະປະຣິນຍາສູດ
## ວ່າດ້ວຍການກຳນົດຮູ້ທຳທັງປວງ

[໗] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ຜູ້ບໍ່ຮູ້ຊຶ້ງເຖິງທຳທັງປວງ[໑] ຍັງກຳນົດຮູ້ທຳທັງປວງບໍ່ໄດ້[໒] ຍັງບໍ່ຄາຍຄວາມພໍໃຈໃນທຳທັງປວງນັ້ນ ຍັງລະທຳທັງປວງບໍ່ໄດ້[໓] ກໍຍັງບໍ່ອາດສິ້ນທຸກໄດ້ ພິກຂຸທັງຫຼາຍ ສ່ວນຜູ້ຮູ້ຊຶ້ງເຖິງທຳທັງປວງ ກຳນົດຮູ້ທຳທັງປວງໄດ້ ຄາຍຄວາມພໍໃຈໃນທຳທັງປວງນັ້ນໄດ້ ລະທຳທັງປວງໄດ້ ຈຶ່ງອາດສິ້ນທຸກໄດ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ຜູ້ໃດຮູ້ທຳທັງປວງໂດຍອາການທຸກຢ່າງ
ບໍ່ຍິນດີໃນທຳທັງປວງ
ຜູ້ນັ້ນແລ ກຳນົດຮູ້ທຳທັງປວງໄດ້
ລ່ວງພົ້ນທຸກທັງປວງໄດ້

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ສັບພະປະຣິນຍາສູດທີ ໗ ຈົບ**

# ໗. ມານະປະຣິນຍາສູດ

## ວ່າດ້ວຍການກຳນົດຮູ້ມານະ

[໗] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ຜູ້ບໍ່ຮູ້ຊຶ້ງເຖິງມານະ ຍັງກຳນົດຮູ້ມານະບໍ່ໄດ້ ຍັງບໍ່ຄາຍຄວາມພໍໃຈໃນມານະນັ້ນ ຍັງລະມານະບໍ່ໄດ້ ກໍຍັງບໍ່ອາດສິ້ນທຸກໄດ້ ພິກຂຸທັງຫຼາຍ ສ່ວນຜູ້ຮູ້ຊຶ້ງເຖິງມານະກຳນົດຮູ້ມານະໄດ້ ຄາຍຄວາມພໍໃຈໃນມານະນັ້ນໄດ້ ລະມານະໄດ້ ຈຶ່ງອາດສິ້ນທຸກໄດ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ໝູ່ສັດນີ້ປະກອບດ້ວຍມານະ
ຖືກມານະຮ້ອຍຮັດໄວ້ ຍິນດີແລ້ວໃນພົບ
ບໍ່ກຳນົດຮູ້ມານະ ຈຶ່ງກັບມາເກີດຊ້ຳອີກ
ສ່ວນໝູ່ສັດທີ່ລະມານະໄດ້ແລ້ວ
ນ້ອມໃຈໄປໃນທຳເປັນທີ່ສິ້ນສຸດມານະ
ຄອບງຳມານະທີ່ຮ້ອຍຮັດໄດ້ແລ້ວ
ລ່ວງພົ້ນກິເລດເຄື່ອງຮ້ອຍຮັດໄດ້ທັງໝົດ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ມານະປະຣິນຍາສູດທີ ໗ ຈົບ**

# ໘. ໂລພະປະຣິນຍາສູດ

## ວ່າດ້ວຍການກຳນົດຮູ້ໂລພະ

[໘] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ຜູ້ບໍ່ຮູ້ຊຶ້ງເຖິງໂລພະ ຍັງກຳນົດຮູ້ໂລພະບໍ່ໄດ້ ຍັງບໍ່ຄາຍຄວາມພໍໃຈໃນໂລພະນັ້ນ ຍັງລະໂລພະບໍ່ໄດ້ ກໍຍັງບໍ່ອາດສິ້ນທຸກໄດ້ ພິກຂຸທັງຫຼາຍ ສ່ວນຜູ້ຮູ້ຊຶ້ງເຖິງໂລພະ ກຳນົດຮູ້ໂລພະໄດ້ ຄາຍຄວາມພໍໃຈໃນໂລພະນັ້ນໄດ້ ລະໂລພະໄດ້ແລ້ວ ຈຶ່ງອາດສິ້ນທຸກໄດ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ໂລພະໃດເປັນເຫດໃຫ້ສັດຜູ້ໂລບໄປສູ່ທຸກຄະຕິ
ຜູ້ມີປັນຍາເຫັນແຈ້ງ ຍ່ອມລະໂລພະນັ້ນໄດ້ຍ້ອນຮູ້ໂດຍຖືກຕ້ອງ
ເມື່ອລະໄດ້ແລ້ວ ຈຶ່ງບໍ່ຕ້ອງຫວນກັບມາເກີດໃນໂລກນີ້ອີກ
ບໍ່ວ່າໃນການໃດ ໆ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບວນີ້ແລ

**ໂລພະປະຣິນຍາສູດທີ ໙ ຈົບ**

## ໑໐. ໂທສະປະຣິນຍາສູດ

## ວ່າດ້ວຍການກຳນົດຮູ້ໂທສະ

[໑໐] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບວນີ້

ພິກຂຸທັງຫຼາຍ ຜູ້ບໍ່ຮູ້ຊຶ້ງເຖິງໂທສະ ຍັງກຳນົດຮູ້ໂທສະບໍ່ໄດ້ ຍັງບໍ່ຄາຍຄວາມພໍໃຈໃນໂທສະນັ້ນ ຍັງລະໂທສະບໍ່ໄດ້ ກໍຍັງບໍ່ອາດສິ້ນທຸກໄດ້ ພິກຂຸທັງຫຼາຍ ສ່ວນຜູ້ຮູ້ຊຶ້ງເຖິງໂທສະ ກຳນົດຮູ້ໂທສະໄດ້ ຄາຍຄວາມພໍໃຈໃນໂທສະນັ້ນໄດ້ ລະໂທສະໄດ້ແລ້ວ ຈຶ່ງອາດສິ້ນທຸກໄດ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ໂທສະໃດເປັນເຫດໃຫ້ສັດຜູ້ປະທຸດສະຮ້າຍໄປສູ່ທຸກຄະຕິ
ຜູ້ມີປັນຍາເຫັນແຈ້ງ ຍ່ອມລະໂທສະນັ້ນໄດ້ຍ້ອນຮູ້ໂດຍຖືກຕ້ອງ
ເມື່ອລະໄດ້ແລ້ວ ຈຶ່ງບໍ່ຕ້ອງຫວນກັບມາເກີດໃນໂລກນີ້ອີກ
ບໍ່ວ່າໃນການໃດ ໆ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບວນີ້ແລ

**ໂທສະປະຣິນຍາສູດທີ ໑໐ ຈົບ**

**ປະຖົມວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ໂລພະສູດ | ໒. ໂທສະສູດ |
| ໓. ໂມຫະສູດ | ໔. ໂກທະສູດ |
| ໕. ມັກຂະສູດ | ໖. ມານະສູດ |
| ໗. ສັບພະປະຣິນຍາສູດ | ໘. ມານະປະຣິນຍາສູດ |
| ໙. ໂລພະປະຣິນຍາສູດ | ໑໐. ໂທສະປະຣິນຍາສູດ |

# ໒. ທຸຕິຍະວັກ

## ໝວດທີ ໒

## ໑. ໂມຫະປະຣິນຍາສູດ

### ວ່າດ້ວຍການກຳນົດຮູ້ໂມຫະ

[໑໑] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ຜູ້ບໍ່ຮູ້ຊຶ້ງເຖິງໂມຫະ ຍັງກຳນົດຮູ້ໂມຫະບໍ່ໄດ້ ຍັງບໍ່ຄາຍຄວາມພໍໃຈໃນໂມຫະນັ້ນ ຍັງລະໂມຫະບໍ່ໄດ້ ກໍຍັງບໍ່ອາດສິ້ນທຸກໄດ້ ພິກຂຸທັງຫຼາຍ ສ່ວນຜູ້ຮູ້ຊຶ້ງເຖິງໂມຫະກຳນົດຮູ້ໂມຫະໄດ້ ຄາຍຄວາມພໍໃຈໃນໂມຫະນັ້ນໄດ້ ລະໂມຫະໄດ້ແລ້ວ ຈຶ່ງອາດສິ້ນທຸກໄດ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ໂມຫະໃດເປັນເຫດໃຫ້ສັດຜູ້ຫຼົງໄປສູ່ທຸກຄະຕິ
ຜູ້ມີປັນຍາເຫັນແຈ້ງ ຍ່ອມລະໂມຫະນັ້ນໄດ້ຍ້ອນຮູ້ໂດຍຖືກຕ້ອງ
ເມື່ອລະໄດ້ແລ້ວ ຈຶ່ງບໍ່ຕ້ອງຫວນກັບມາເກີດໃນໂລກນີ້ອີກ
ບໍ່ວ່າໃນການໃດ ໆ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ໂມຫະປະຣິນຍາສູດທີ ໑ ຈົບ**

# ໘. ໂກທະປະຣິນຍາສູດ

## ວ່າດ້ວຍການກຳນົດຮູ້ຄວາມໂກດ

[໑໘] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ຜູ້ບໍ່ຮູ້ຊຶ້ງເຖິງຄວາມໂກດ ຍັງກຳນົດຮູ້ຄວາມໂກດບໍ່ໄດ້ ຍັງບໍ່ຄາຍຄວາມພໍໃຈໃນຄວາມໂກດນັ້ນ ຍັງລະຄວາມໂກດບໍ່ໄດ້ ກໍຍັງບໍ່ອາດສິ້ນທຸກໄດ້ ພິກຂຸທັງຫຼາຍ ສ່ວນຜູ້ຮູ້ຊຶ້ງເຖິງຄວາມໂກດ ກຳນົດຮູ້ຄວາມໂກດໄດ້ ຄາຍຄວາມພໍໃຈໃນຄວາມໂກດນັ້ນໄດ້ ລະຄວາມໂກດໄດ້ແລ້ວຈຶ່ງອາດສິ້ນທຸກໄດ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ຄວາມໂກດໃດເປັນເຫດໃຫ້ສັດຜູ້ໂກດໄປສູ່ທຸກຄະຕິ
ຜູ້ມີປັນຍາເຫັນແຈ້ງ ຍ່ອມລະຄວາມໂກດນັ້ນໄດ້ຍ້ອນຮູ້ໂດຍຖືກຕ້ອງ
ເມື່ອລະໄດ້ແລ້ວ ກໍບໍ່ຕ້ອງຫວນກັບມາເກີດໃນໂລກນີ້ອີກ
ບໍ່ວ່າໃນການໃດ ໆ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ໂກທະປະຣິນຍາສູດທີ ໘ ຈົບ**

# ໙. ມັກຂະປະຣິນຍາສູດ

## ວ່າດ້ວຍການກຳນົດຮູ້ມັກຂະ

[໑໙] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ຜູ້ບໍ່ຮູ້ຊຶ້ງເຖິງມັກຂະ ຍັງກຳນົດຮູ້ມັກຂະບໍ່ໄດ້ ຍັງບໍ່ຄາຍຄວາມພໍໃຈໃນມັກຂະນັ້ນ ຍັງລະມັກຂະບໍ່ໄດ້ ກໍຍັງບໍ່ອາດສິ້ນທຸກໄດ້ ພິກຂຸທັງຫຼາຍ ສ່ວນຜູ້ຮູ້ຊຶ້ງເຖິງມັກຂະກຳນົດຮູ້ມັກຂະໄດ້ ຄາຍຄວາມພໍໃຈໃນມັກຂະນັ້ນໄດ້ ລະມັກຂະໄດ້ແລ້ວ ຈຶ່ງອາດສິ້ນທຸກໄດ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ມັກຂະໃດ ເປັນເຫດໃຫ້ສັດຜູ້ລົບຫຼູ່ຄຸນທ່ານໄປສູ່ທຸກຄະຕິ

ຜູ້ມີປັນຍາເຫັນແຈ້ງ ຍ່ອມລະມັກຂະນັ້ນໄດ້ຍ້ອນຮູ້ໂດຍຖືກຕ້ອງ
ເມື່ອລະໄດ້ແລ້ວ ຈຶ່ງບໍ່ຕ້ອງຫວນກັບມາເກີດໃນໂລກນີ້ອີກ
ບໍ່ວ່າໃນການໃດ ໆ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ມັກຂະປະຣິນຍາສູດທີ ໓ ຈົບ**

## ໔. ອະວິດຊານີວະຣະນະສູດ

## ວ່າດ້ວຍທຳເຄື່ອງກາງກັ້ນຄືອະວິດຊາ

[໑໔] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ເຮົາບໍ່ເຫັນທຳເຄື່ອງກາງກັ້ນອື່ນແມ່ນແນວໜຶ່ງ ທີ່ເປັນເຫດໃຫ້ ໝູ່ສັດເຊິ່ງຖືກທຳເຄື່ອງກາງກັ້ນປິດບັງແລ້ວ ຕ້ອງແລ່ນໄປ ທ່ອງທ່ຽວໄປສິ້ນການລະນານ ຄືທຳເຄື່ອງກາງກັ້ນຄືອະວິດຊານີ້ເລີຍ ພິກຂຸທັງຫຼາຍ ໝູ່ສັດທີ່ຖືກທຳເຄື່ອງກາງກັ້ນຄືອະວິດຊາປິດບັງແລ້ວ ຕ້ອງແລ່ນໄປ ທ່ອງທ່ຽວໄປສິ້ນການລະນານ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ບໍ່ມີທຳອື່ນແມ່ນແນວໜຶ່ງທີ່ເປັນເຫດໃຫ້ໝູ່ສັດ
ເຊິ່ງຖືກປິດບັງແລ້ວ ຕ້ອງແລ່ນໄປ ທ່ອງທ່ຽວໄປທັງມື້ແລະຄືນ
ຄືຖືກໂມຫະປິດກັ້ນເລີຍ
ສ່ວນອະຣິຍະສາວົກທັງຫຼາຍ ລະໂມຫະໄດ້
ທຳລາຍກອງແຫ່ງຄວາມມືດໄດ້
ຍ່ອມບໍ່ທ່ອງທ່ຽວໄປອີກ
ຍ້ອນທ່ານເຫຼົ່ານັ້ນບໍ່ມີອະວິດຊາເປັນເຫດ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ອະວິດຊານີວະຣະນະສູດທີ ໔ ຈົບ**

# ໕. ຕັນຫາສັງໂຍຊະນະສູດ

## ວ່າດ້ວຍສັງໂຍດຄືຕັນຫາ

[໑໕] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ເຮົາບໍ່ເຫັນສັງໂຍດອື່ນແມ່ນແນວໜຶ່ງທີ່ເປັນເຫດໃຫ້ໝູ່ສັດເຊິ່ງຖືກ ສັງ ໂຍດຜູກມັດແລ້ວຕ້ອງແລ່ນໄປ ທ່ອງທ່ຽວໄປສິ້ນການລະນານຄືສັງໂຍດຄືຕັນຫານີ້ເລີຍ ພິກຂຸທັງຫຼາຍ ໝູ່ສັດທີ່ຖືກສັງໂຍດຄືຕັນຫາຜູກມັດແລ້ວ ຕ້ອງແລ່ນໄປ ທ່ອງທ່ຽວໄປ ສິ້ນການລະນານ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ບຸກຄົນຜູ້ມີຕັນຫາເປັນເພື່ອນ ທ່ອງທ່ຽວໄປຕະຫຼອດການຍາວນານ
ຍ່ອມບໍ່ລ່ວງພົ້ນສັງສາຣະວັດທີ່ມີສະພາວະແນວນີ້ແລະສະພາວະແນວອື່ນ
ພິກຂຸຮູ້ໂທດນີ້ ຮູ້ຕັນຫາເປັນເຫດໃຫ້ເກີດທຸກ
ເພິ່ງເປັນຜູ້ບໍ່ມີຕັນຫາ ບໍ່ມີຄວາມຖືໝັ້ນ ມີສະຕິສຳປະຊັນຍະຢູ່໑

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ຕັນຫາສັງໂຍຊະນະສູດທີ ໕ ຈົບ**

# ໖. ປະຖົມເສຂະສູດ

## ວ່າດ້ວຍພຣະເສຂະ ສູດທີ ໑

[໑໖] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ເມື່ອພິກຂຸຜູ້ເປັນພຣະເສຂະຍັງບໍ່ບັນລຸ ປາຖະໜາຈະບັນລຸທຳອັນເປັນແດນກະເສມຈາກໂຍຄະ໒ອັນປະເສີດ ເຮົາບໍ່ເຫັນເຫດອື່ນແມ່ນແນວໜຶ່ງທີ່ເຮັດເຫດເຊິ່ງ ມີຢູ່ພາຍໃນຕົນໃຫ້ມີອຸປະກາຣະຫຼາຍແນວນີ້ຄືໂຍນິໂສມະນະສິການ (ການມະນະສິການໂດຍແຍບຄາຍ) ນີ້ເລີຍ ພິກຂຸທັງຫຼາຍ ພິກຂຸເມື່ອມະນະສິການໂດຍແຍບຄາຍຍ່ອມລະອະກຸສົນໄດ້ ແລະເຮັດກຸສົນ ໃຫ້ຈະເລີນ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ບໍ່ມີທຳອື່ນທີ່ຈະມີອຸປະກາຣະຫຼາຍ
ແກ່ພິກຂຸຜູ້ເປັນພຣະເສຂະເພື່ອການບັນລຸປະໂຫຍດສູງສຸດ
ຄືກັບໂຍນິໂສມະນະສິການ
ຍ້ອນພິກຂຸເມື່ອເລີ່ມຕັ້ງຄວາມພຽນດ້ວຍໂຍນິໂສມະນະສິການໄວ້
ກໍເພິ່ງບັນລຸຄວາມສິ້ນທຸກໄດ້

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ປະຖົມເສຂະສູດທີ ໖ ຈົບ**

## ໗. ທຸຕິຍະເສຂະສູດ

## ວ່າດ້ວຍພຣະເສຂະ ສູດທີ ໘

[໑໗] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ເມື່ອພິກຂຸຜູ້ເປັນພຣະເສຂະຍັງບໍ່ບັນລຸ ປາຖະໜາຈະບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດ ເຮົາບໍ່ເຫັນເຫດອື່ນແມ່ນແນວໜຶ່ງທີ່ເຮັດເຫດເຊິ່ງມີ ຢູ່ພາຍນອກຕົນໃຫ້ມີອຸປະກາຣະຫຼາຍແນວນີ້ຄືຄວາມເປັນຜູ້ມີມິດດີນີ້ເລີຍ ພິກຂຸທັງຫຼາຍ ພິກຂຸຜູ້ມີມິດດີຍ່ອມລະອະກຸສົນໄດ້ ແລະເຮັດກຸສົນໃຫ້ຈະເລີນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ພິກຂຸຜູ້ມີມິດດີ ມີຄວາມເຄົາລົບ ຢຳເກງ
ປະຕິບັດຕາມຄຳຂອງມິດທັງຫຼາຍ
ມີສະຕິສຳປະຊັນຍະໝັ້ນຄົງ
ກໍເພິ່ງເຖິງຄວາມສິ້ນສັງໂຍດທັງປວງໄດ້ໂດຍລຳດັບ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ທຸຕິຍະເສຂະສູດທີ ໗ ຈົບ**

## ໗. ສັງຄະເພທະສູດ
## ວ່າດ້ວຍການເຮັດສົງໃຫ້ແຕກກັນ

[໑໗] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທຳແນວໜຶ່ງ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນ ເພື່ອບໍ່ແມ່ນເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນຄວາມສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດ ເພື່ອບໍ່ແມ່ນເກື້ອກູນແກ່ຄົນທັງຫຼາຍ ເກີດຂຶ້ນເພື່ອຄວາມທຸກແກ່ເທວະດາແລະມະນຸດທັງຫຼາຍ

ທຳແນວໜຶ່ງ ຄື ອັນໃດ?

ຄື ສັງຄະເພດ[໑]

ພິກຂຸທັງຫຼາຍ ກໍເມື່ອສົງແຕກກັນ ຍ່ອມມີຄວາມບາດໝາງກັນ ມີການກ່າວໂທດກັນ ມີການດູ ໝິ່ນກັນ ແລະມີການຂັບໄລ່ກັນ ໃນຍ້ອນສັງຄະເພດນັ້ນ ຊົນທັງຫຼາຍທີ່ຍັງບໍ່ເຫຼື້ອມໃສ ກໍບໍ່ເຫຼື້ອມໃສ ແລະລາງພວກທີ່ເຫຼື້ອມໃສແລ້ວ ກໍຍ່ອມເປັນອື່ນໄປ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ຜູ້ທຳລາຍສົງໃຫ້ແຕກກັນ ຍິນດີໃນການແຕກກັນ
ຕັ້ງຢູ່ໃນອະທຳ ເປັນຜູ້ເຂົ້າເຖິງອະບາຍ ຢູ່ໃນນະຣົກຕະຫຼອດກັປ
ພາດຈາກທຳອັນເປັນແດນກະເສມຈາກໂຍຄະ[໔]
ສະເຫວີຍຜົນກຳຢູ່ໃນນະຣົກຕະຫຼອດກັປ
ຍ້ອນທຳລາຍສົງທີ່ສາມັກຄີກັນໃຫ້ແຕກແຍກກັນ[໓]

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ສັງຄະເພທະສູດທີ ໗ ຈົບ**

## ໘. ສັງຄະສາມັກຄີສູດ
## ວ່າດ້ວຍການເຮັດສົງໃຫ້ສາມັກຄີກັນ

[໑໘] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທຳແນວໜຶ່ງ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເກີດຂຶ້ນເພື່ອຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍ

ທຳແນວໜຶ່ງ ຄື ອັນໃດ?

ຄື ສັງຄະສາມັກຄີ

ພິກຂຸທັງຫຼາຍ ກໍເມື່ອສົງພ້ອມພຽງກັນ ຍ່ອມບໍ່ມີຄວາມບາດໝາງກັນ ບໍ່ມີການຂົ່ມຂູ່ກັນ ບໍ່ມີການດ່າວ່າກັນ ແລະບໍ່ມີການຂັບໄລ່ກັນ ໃນຍ້ອນຄວາມສາມັກຄີຂອງສົງນັ້ນ ຊົນທັງຫຼາຍທີ່ຍັງບໍ່ເຫຼື້ອມໃສ ກໍເຫຼື້ອມໃສ ສ່ວນຊົນທັງຫຼາຍທີ່ເຫຼື້ອມໃສແລ້ວ ກໍເຫຼື້ອມໃສຍິ່ງ ໆ ຂຶ້ນໄປ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ຄວາມສາມັກຄີແຫ່ງສົງ ເປັນເຫດໃຫ້ເກີດສຸກ
ແລະບຸກຄົນຜູ້ອະນຸເຄາະສົງຜູ້ສາມັກຄີກັນແລ້ວ
ຜູ້ຍິນດີໃນຄວາມສາມັກຄີກັນ ຕັ້ງຢູ່ໃນທຳ
ຍ່ອມບໍ່ພາດຈາກທຳອັນເປັນແດນກະເສມຈາກໂຍຄະ
ຍ່ອມບັນເທີງໃນສະຫວັນຕະຫຼອດກັບ ຍ້ອນສະມານສົງໃຫ້ສາມັກຄີກັນ[໑]

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ສັງຄະສາມັກຄີສູດທີ ໙ ຈົບ**

## ໑໐. ປະທຸດຖະຈິດຕະສູດ

## ວ່າດ້ວຍບຸກຄົນຜູ້ມີຈິດຖືກປະທຸດສະຮ້າຍ[໒]

[໒໐] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ເຮົາກຳນົດວາຣະຈິດຂອງບຸກຄົນຜູ້ມີຈິດຖືກປະທຸດສະຮ້າຍລາງຄົນໃນໂລກນີ້ດ້ວຍໃຈ ຈຶ່ງຮູ້ແຈ້ງແນວນີ້ວ່າ ຖ້າບຸກຄົນນີ້ຕາຍໃນຂະນະນີ້ ຈະຖືກໄໝ້ໃນນະຣົກຄືຖືກນຳໄປຝັງໄວ້ ຂໍ້ນັ້ນຍ້ອນເຫດອັນໃດ ຍ້ອນຈິດຂອງເຂົາຖືກປະທຸດສະຮ້າຍ ພິກຂຸທັງຫຼາຍ ກໍຍ້ອນ

ເຫດທີ່ມີຈິດຖືກປະທຸດສະຮ້າຍນັ້ນເອງ ສັດທັງຫຼາຍລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ດ້ວຍອາການແນວນີ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ພຣະພຸດທະເຈົ້າຊົງຮູ້ບຸກຄົນລາງຄົນ
ຜູ້ມີຈິດຖືກປະທຸດສະຮ້າຍແລ້ວໃນໂລກນີ້
ຈຶ່ງຊົງຂະຫຍາຍເນື້ອຄວາມນີ້ໃຫ້ແຈ້ງແກ່ພິກຂຸທີ່ຢູ່ໃກ້ວ່າ
ຖ້າບຸກຄົນນີ້ຕາຍໃນຂະນະນີ້ ຕ້ອງໄປເກີດໃນນະຮົກ
ຍ້ອນຈິດຂອງເຂົາຖືກປະທຸດສະຮ້າຍ
ເຂົາເປັນແນວນັ້ນ ຄືຖືກນຳໄປຝັງໄວ້
ກໍຍ້ອນເຫດທີ່ມີຈິດຖືກປະທຸດສະຮ້າຍ
ສັດທັງຫຼາຍຈຶ່ງໄປສູ່ທຸກຄະຕິ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ປະທຸດຖະຈິດຕະສູດທີ ໑໐ ຈົບ**

**ທຸຕິຍະວັກ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ໂມຫະປະຣິນຍາສູດ
໒. ມັກຂະປະຣິນຍາສູດ
໓. ຕັນຫາສັງໂຍຊະນະສູດ
໔. ທຸຕິຍະເສຂະສູດ
໕. ສັງຄະສາມັກຄີສູດ
໖. ໂກດປະຣິນຍາສູດ
໗. ອະວິດຊານີວະຣະນະສູດ
໘. ປະຖົມເສຂະສູດ
໙. ສັງຄະເພທະສູດ
໑໐. ປະທຸດຖະຈິດຕະສູດ

# ໓. ຕະຕິຍະວັກ

## ໝວດທີ ໓

## ໑. ປະສັນນະຈິດຕະສູດ

## ວ່າດ້ວຍບຸກຄົນຜູ້ມີຈິດເຫຼື້ອມໃສ

[໔໑] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ເຮົາກຳນົດວາຣະຈິດຂອງບຸກຄົນຜູ້ມີຈິດເຫຼື້ອມໃສລາງຄົນໃນໂລກນີ້ດ້ວຍໃຈ ຈຶ່ງຮູ້ແຈ້ງແນວນີ້ວ່າ ຖ້າບຸກຄົນນີ້ຕາຍໃນຂະນະນີ້ ຈະດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້ ຂໍ້ນັ້ນຍ້ອນເຫດອັນໃດ ຍ້ອນຈິດຂອງເຂົາເຫຼື້ອມໃສ ພິກຂຸທັງຫຼາຍ ກໍຍ້ອນເຫດທີ່ມີຈິດເຫຼື້ອມໃສນັ້ນເອງ ສັດທັງຫຼາຍ ລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ ດ້ວຍອາການແນວນີ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ພຣະພຸດທະເຈົ້າຊົງຮູ້ບຸກຄົນລາງຄົນ
ຜູ້ມີຈິດເຫຼື້ອມໃສ°ໃນໂລກນີ້
ຈຶ່ງຊົງຂະຫຍາຍເນື້ອຄວາມນີ້ໃຫ້ແຈ້ງແກ່ພິກຂຸທີ່ຢູ່ໃກ້ວ່າ
ຖ້າບຸກຄົນນີ້ຕາຍໃນຂະນະນີ້ ຕ້ອງໄປເກີດໃນສຸກຄະຕິໂລກສະຫວັນ
ຍ້ອນຈິດຂອງເຂົາເຫຼື້ອມໃສ
ເຂົາເປັນແນວນັ້ນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້
ກໍຍ້ອນເຫດທີ່ມີຈິດເຫຼື້ອມໃສ ສັດທັງຫຼາຍຈຶ່ງໄປສູ່ສຸກຄະຕິ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ປະສັນນະຈິດຕະສູດທີ ໑ ຈົບ**

## ໔. ເມດຕະສູດ

## ວ່າດ້ວຍການຈະເລີນເມດຕາ

[໔໔] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍຢ່າຢ້ານບຸນເລີຍ ຄຳວ່າ ບຸນ ນີ້ ເປັນຊື່ຂອງຄວາມສຸກ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າຮັກ ໜ້າພໍໃຈ ເຮົາຮູ້ແຈ້ງຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າຮັກ ໜ້າພໍໃຈຂອງບຸນທີ່ເຮົາເຮັດໄວ້ຕະຫຼອດການລະນານ ເຮົາຈະເລີນເມດຕາພົມວິຫານມາເຖິງ ໗ ປີ ຈຶ່ງບໍ່ມາເກີດໃນໂລກນີ້ອີກເຖິງ ໗ ສັງວັດຕະວິວັດຕະກັບ[១] ຮູ້ມາວ່າ ເມື່ອກັບພິນາດໄປ ເຮົາບັງເກີດ ຢູ່ໃນພົມມະໂລກຊັ້ນອາພັດສະຣະ ເມື່ອກັບຈະເລີນຂຶ້ນໃໝ່ ເຮົາບັງເກີດຢູ່ໃນພົມວິມານທີ່ວ່າງເປົ່າ

ພິກຂຸທັງຫຼາຍ ໃນພົມວິມານນັ້ນ ເຮົາເປັນພົມ ເປັນຜູ້ຍິ່ງໃຫຍ່ ບໍ່ມີໃຜທຽບໄດ້ດ້ວຍຄຸນນະທຳ ເປັນຜູ້ສາມາດເຫັນອະດີດ ອະນາຄົດ ແລະປັດຈຸບັນໄດ້ຢ່າງແຈ່ມແຈ້ງ ເປັນຜູ້ບັງຄັບຈິດໃຫ້ເປັນໄປໃນອຳນາດຂອງຕົນໄດ້ ພິກຂຸທັງຫຼາຍ ເຮົາເຄີຍເປັນທ້າວສັກກະຈອມເທບ ເຖິງ ໓໖ ຊາດຕິດຕໍ່ກັນ ເຄີຍເປັນພຣະເຈົ້າຈັກກະພັດຜູ້ຊົງທຳ ເປັນທຳມະຣາຊາມີອຳນາດ ແຜ່ໄປທົ່ວມະຫາສະມຸດທັງ ໔ ເປັນຜູ້ພິຊິດໄຊໄດ້ທັງພາຍໃນແລະພາຍນອກ ມີແວ່ນແຄວ້ນໝັ້ນຄົງ ປະຊາຊົນຮັ່ງມີ ສົມບູນດ້ວຍຣັດຕະນະ ໗ ປະການ[២] ນັບໄດ້ຫຼາຍຮ້ອຍຄັ້ງ ບໍ່ຈຳເປັນຕ້ອງກ່າວເຖິງການເກີດເປັນພຣະເຈົ້າແຜ່ນດິນປະເທດຣາດເລີຍ

ເຮົານັ້ນໄດ້ມີຄວາມຄິດແນວນີ້ວ່າ ບັດນີ້ ເຮົາເປັນຜູ້ມີລິດຫຼາຍ ມີອານຸພາບຫຼາຍເຖິງພຽງນີ້ດ້ວຍຜົນຂອງກຳແລະວິບາກຂອງກຳອັນໃດນໍ

ພິກຂຸທັງຫຼາຍ ເຮົາຕອບຕົນເອງໄດ້ວ່າ ບັດນີ້ ເຮົາເປັນຜູ້ມີລິດຫຼາຍ ມີອານຸພາບຫຼາຍເຖິງພຽງນີ້ດ້ວຍຜົນຂອງກຳແລະວິບາກຂອງກຳ ໓ ປະການ ຄື

໑. ທານ (ການໃຫ້)[១]
໒. ທະມະ (ການເຝິກຕົນ)[២]
໓. ສັນຍະມະ (ການສັງລວມ)[៣]

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ບັນດິດເພິ່ງສຶກສາບຸນທີ່ດີເລີດ
ມີຄວາມສຸກເປັນກຳໄລທີ່ນັ້ນ ຄືເພິ່ງພໍາເພັງທານ
ປະພຶດທຳສະໝໍ່າສະເໝີ ແລະຈະເລີນເມດຕາຈິດ
ບັນດິດເມື່ອພໍາເພັງທຳ ໓ ປະການ
ອັນເປັນເຫດເກີດຄວາມສຸກເຫຼົ່ານີ້ແລ້ວ
ຍ່ອມເຂົ້າເຖິງໂລກທີ່ເປັນສຸກ ເຊິ່ງບໍ່ມີການບຽດບຽນກັນ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບບນີ້ແລ

**ເມດຕະສູດທີ ໔ ຈົບ**

## ໕. ອຸພະຍັດຖະສູດ

## ວ່າດ້ວຍປະໂຫຍດທັງສອງ

[໔໕] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບບນີ້

ພິກຂຸທັງຫຼາຍ ທຳແບບໜຶ່ງທີ່ບຸກຄົນອົບຮົມແລ້ວ ເຮັດໃຫ້ຫຼາຍແລ້ວ ຍ່ອມຖືເອົາປະໂຫຍດທັງສອງໄດ້ ຄື ປະໂຫຍດໃນໂລກນີ້ແລະປະໂຫຍດໃນໂລກໜ້າ

ທຳແບບໜຶ່ງ ຄື ອັນໃດ?

ຄື ຄວາມບໍ່ຜະໝາດໃນກຸສົນທຳທັງຫຼາຍ

ພິກຂຸທັງຫຼາຍ ທຳແບບໜຶ່ງນີ້ແລ ທີ່ບຸກຄົນອົບຮົມແລ້ວ ເຮັດໃຫ້ຫຼາຍແລ້ວ ຍ່ອມຖືເອົາປະໂຫຍດທັງສອງໄດ້ ຄື ປະໂຫຍດໃນໂລກນີ້ແລະປະໂຫຍດໃນໂລກໜ້າ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ບັນດິດທັງຫຼາຍຍ່ອມສັນເສີນຄວາມບໍ່ຜະໝາດ
ໃນການເຮັດບຸນທັງຫຼາຍ
ບັນດິດຜູ້ບໍ່ຜະໝາດຍ່ອມບັນລຸປະໂຫຍດທັງສອງ
ທີຣະຊົນ ເຮົາຮຽກວ່າ ບັນດິດ
ຍ້ອນຍຶດປະໂຫຍດທັງສອງໄວ້ໄດ້ ຄື
ປະໂຫຍດໃນປັດຈຸບັນ ແລະປະໂຫຍດໃນພາຍໜ້າ[໑]

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບບນີ້ແລ

**ອຸພະຍັດຖະສູດທີ ໕ ຈົບ**

# ໔. ອັດຖິປຸນຊະສູດ

## ວ່າດ້ວຍຮ່າງກະດູກ

[໘໔] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ເມື່ອບຸກຄົນຄົນໜຶ່ງເພິ່ງແລ່ນໄປ ທ່ອງທ່ຽວໄປຕະຫຼອດກັບ ໂຄງກະດູກ ຮ່າງກະດູກ ກອງກະດູກ ຖ້າມີຄົນຮິບໂຮມເກັບໄວ້ ແລະບໍ່ສູນຫາຍໄປ ກໍຈະເປັນກອງກະດູກໃຫຍ່ ໃຫຍ່ທໍ່ພູເວປຸນລະນີ້ແນ່ນອນ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ພຣະສຳມາສຳພຸດທະເຈົ້າຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ໄດ້ຕັດໄວ້ວ່າ
ກອງກະດູກຂອງຄົນຄົນໜຶ່ງ ຕະຫຼອດກັບໜຶ່ງ
ຈະເປັນກອງກະດູກຂະໜາດທໍ່ພູ
ພູເວປຸນລະນີ້ນັ້ນ ເປັນພູກວ້າງໃຫຍ່
ຕັ້ງຢູ່ທາງເໜືອພູຄິດຊະກູດ ເຂດນະຄອນຣາດຊະຄຶຂອງຊາວມະຄົດ
ເມື່ອໃດ ບຸກຄົນພິຈາລະນາເຫັນອະຣິຍະສັດ ໔ ຄື
ທຸກ ເຫດເກີດແຫ່ງທຸກ ຄວາມພົ້ນທຸກ ແລະອະຣິຍະມັກມີອົງ ໘
ເຊິ່ງເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ ດ້ວຍປັນຍາອັນຖືກຕ້ອງ
ເມື່ອນັ້ນ ບຸກຄົນນັ້ນແລ່ນໄປແລ້ວອີກ ໗ ຊາດເປັນຢ່າງຍິ່ງ
ກໍຈະເຮັດບ່ອນສຸດທຸກໄດ້ ຍ້ອນສັງໂຍດທັງປວງສິ້ນໄປ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ອັດຖິປຸນຊະສູດທີ ໔ ຈົບ**

# ໕. ມຸສາວາທະສູດ

## ວ່າດ້ວຍການກ່າວຕົວະ

[໘໕] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ວ່າ

ເຫັນຖືກ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ນັ້ນ ເຮົາບໍ່ໄດ້ກ່າວຍ້ອນ ຮັບຟັງມາຈາກສະມະນະຫຼືພາມອື່ນ ໆ ເລີຍ

ພິກຂຸທັງຫຼາຍ ແທ້ທີ່ຈິງແລ້ວ ເຮົາຮູ້ເອງ ເຫັນເອງ ຊາບເອງທັງນັ້ນ ຈຶ່ງກ່າວຄຳນີ້ວ່າເຮົາໄດ້ເຫັນເຫຼົ່າສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ບຸກຄົນໃນໂລກນີ້ ຕັ້ງຈິດໄວ້ຖືກຕ້ອງ ກ່າວວາຈາຖືກ
ເຮັດວຽກງານທາງກາຍທີ່ຖືກ ມີຄວາມຂົນຂວາຍຫຼາຍ
ໄດ້ເຮັດກຳອັນເປັນບຸນໄວ້ໃນຊີວິດອັນໜ້ອຍໃນໂລກນີ້
ເຂົາມີປັນຍາ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສະຫວັນ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ສຳມາທິດຖິກະສູດທີ ໘ ຈົບ**

## ໙. ນິດສະຣະນິຍະສູດ

## ວ່າດ້ວຍທາດທີ່ມີຄຸນສົມບັດສະລັດອອກ

[໗໘] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທາດເປັນທີ່ສະລັດອອກ ໓ ປະການນີ້

ທາດເປັນທີ່ສະລັດອອກ ໓ ປະການ ອັນໃດແດ່ ຄື

໑. ເນກຂຳມະທາດ[១]ເປັນທີ່ກຳຈັດລະການທັງຫຼາຍ
໒. ອະຣູບທາດ[២]ເປັນທີ່ກຳຈັດລະຣູບທຳທັງຫຼາຍ
໓. ນິໂຣທະທາດ[៣]ເປັນທີ່ກຳຈັດລະທຳມະຊາດທີ່ເກີດແລ້ວ ຖືກປັດໄຈປຸງແຕ່ງອາໄສ ກັນແລະກັນເກີດຂຶ້ນ

ພິກຂຸທັງຫຼາຍ ທາດເປັນທີ່ສະລັດອອກ ໓ ປະການນີ້ແລ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ພິກຂຸຜູ້ມີຄວາມພຽນຮູ້ແຈ້ງທາດເປັນທີ່ກຳຈັດການອອກ
ແລະທາດເປັນເຫດລ່ວງພົ້ນຮູບທຳແລ້ວ
ສຳຜັດພາວະທີ່ສະງົບລະງັບສັງຂານທັງປວງຕະຫຼອດການ
ພິກຂຸນັ້ນແລ ເປັນຜູ້ມີຄວາມເຫັນຖືກ
ຍ້ອນເຫດທີ່ນ້ອມຈິດໄປໃນນິບພານທາດນັ້ນ
ຈຶ່ງຊື່ວ່າສຳເລັດອະພິນຍາ ໕ ປະການ
ເປັນຜູ້ສະງົບ ລ່ວງພົ້ນໂຍຄະໄດ້ແລ້ວ ເປັນມຸນີແທ້ຈິງ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ນິດສະຣະນີຍະສູດທີ ໓ ຈົບ**

## ໔. ສັນຕະຕະຣະສູດ

## ວ່າດ້ວຍນິໂຣດສະງົບຍິ່ງກວ່າອະຣູບທຳ

[໗໓] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ອະຣູບທຳ[໑]ສະງົບຍິ່ງກວ່າຮູບທຳ[໒] ນິໂຣດ[໓]ສະງົບຍິ່ງກວ່າອະຣູບທຳ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ສັດເຫຼົ່າໃດເຂົ້າເຖິງຮູບພົບ
ແລະສັດເຫຼົ່າໃດດຳລົງຢູ່ໃນອະຣູບພົບ
ສັດເຫຼົ່ານັ້ນເມື່ອຍັງບໍ່ຮູ້ແຈ້ງນິໂຣດ ຈະຕ້ອງກັບມາເກີດອີກ
ສ່ວນສັດເຫຼົ່າໃດກຳນົດຮູ້ຮູບທາດໄດ້ແລ້ວ
ບໍ່ຕິດຢູ່ໃນອະຣູບທາດ ນ້ອມຈິດຢູ່ໃນນິໂຣດ
ສັດເຫຼົ່ານັ້ນຍ່ອມລ່ວງພົ້ນມັດຈຸຣາດໄປໄດ້
ພຣະສຳມາສຳພຸດທະເຈົ້າຊົງສຳຜັດອະມະຕະທາດທີ່ຂາດອຸປະທິດ້ວຍນາມກາຍ
ຊົງຮູ້ແຈ້ງປະຈັກເຖິງເຫດແຫ່ງຄວາມກຳຈັດຄືນອຸປະທິ
ຜູ້ຫາອາສະວະບໍ່ໄດ້ ຊົງສະແດງບົດທີ່ບໍ່ມີຄວາມເສົ້າໂສກ ປາສະຈາກທຸລີໄວ້

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ສັນຕະຕະຣະສູດທີ ໔ ຈົບ**

# ໕. ປຸດຕະສູດ
## ວ່າດ້ວຍບຸດ

[໗໔] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ບຸດ ໓ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ບຸດ ໓ ຈຳພວກໃດແດ່ ຄື

໑. ອະຕິຊາຕະບຸດ (ບຸດທີ່ມີຄຸນສົມບັດສູງກວ່າມານດາບິດາ)

໒. ອະນຸຊາຕະບຸດ (ບຸດທີ່ມີຄຸນສົມບັດສະເໝີດ້ວຍມານດາບິດາ)

໓. ອະວະຊາຕະບຸດ (ບຸດທີ່ມີຄຸນສົມບັດຕໍ່າກວ່າມານດາບິດາ)

ອະຕິຊາຕະບຸດ ເປັນແນວໃດ?

ຄື ມານດາບິດາຂອງບຸດໃນໂລກນີ້ບໍ່ເຖິງພຣະພຸດທະເຈົ້າເປັນສະຣະນະ ບໍ່ເຖິງພຣະທຳເປັນສະຣະນະ ບໍ່ເຖິງພຣະສົງເປັນສະຣະນະ ບໍ່ງົດເວັ້ນຈາກການຂ້າສັດ ບໍ່ງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ບໍ່ງົດເວັ້ນຈາກການປະພຶດຜິດໃນກາມ ບໍ່ງົດເວັ້ນຈາກການເວົ້າຕົວະ ບໍ່ງົດເວັ້ນຈາກການດື່ມນ້ຳເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເປັນຜູ້ທຸສີນ ມີທຳຊົ່ວຊາມ ສ່ວນບຸດຂອງມານດາບິດາເຫຼົ່ານັ້ນ ເຖິງພຣະພຸດທະເຈົ້າ ເປັນສະຣະນະ ເຖິງພຣະທຳເປັນສະຣະນະ ເຖິງພຣະສົງເປັນສະຣະນະ ງົດເວັ້ນຈາກການຂ້າສັດ ງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ງົດເວັ້ນຈາກການປະພຶດຜິດໃນກາມ ງົດເວັ້ນຈາກການເວົ້າຕົວະ ງົດເວັ້ນຈາກການດື່ມນ້ຳເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເປັນຜູ້ມີສີນ ມີກັນລະຍານະທຳ ອະຕິຊາຕະບຸດເປັນແນວນີ້

ອະນຸຊາຕະບຸດ ເປັນແນວໃດ?

ຄື ມານດາບິດາຂອງບຸດໃນໂລກນີ້ເຖິງພຣະພຸດທະເຈົ້າເປັນສະຣະນະ ເຖິງພຣະທຳເປັນສະຣະນະ ເຖິງພຣະສົງເປັນສະຣະນະ ງົດເວັ້ນຈາກການຂ້າສັດ ງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ງົດເວັ້ນຈາກການປະພຶດຜິດໃນກາມ ງົດເວັ້ນຈາກການເວົ້າຕົວະ ງົດເວັ້ນຈາກການດື່ມນ້ຳເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເປັນຜູ້ມີສີນ ມີກັນລະຍານະທຳ ແມ່ນບຸດຂອງມານດາບິດາເຫຼົ່ານັ້ນ ກໍເຖິງພຣະພຸດທະເຈົ້າເປັນສະຣະນະ ເຖິງພຣະທຳເປັນສະຣະນະ ເຖິງພຣະສົງເປັນສະຣະນະ ງົດເວັ້ນຈາກການຂ້າສັດ ງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ງົດເວັ້ນຈາກການປະພຶດຜິດໃນກາມ ງົດເວັ້ນຈາກການເວົ້າຕົວະ ງົດເວັ້ນຈາກການດື່ມນ້ຳເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເປັນຜູ້ມີສີນ ມີກັນລະຍານະທຳ ອະນຸຊາຕະບຸດເປັນແນວນີ້

ອະວະຊາຕະບຸດ ເປັນແນວໃດ?

ຄື ມານດາບິດາຂອງບຸດໃນໂລກນີ້ເຖິງພຣະພຸດທະເຈົ້າເປັນສະຣະນະ ເຖິງພຣະທຳເປັນສະຣະນະ ເຖິງພຣະສົງເປັນສະຣະນະ ງົດເວັ້ນຈາກການຂ້າສັດ ງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ງົດເວັ້ນຈາກການປະພຶດຜິດໃນກາມ ງົດເວັ້ນຈາກການເວົ້າຕົວະ ງົດເວັ້ນຈາກ ການດື່ມນ້ຳເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເປັນຜູ້ມີສິນ ມີກັນລະຍານະທຳ ສ່ວນບຸດຂອງມານດາບິດາເຫຼົ່ານັ້ນ ບໍ່ເຖິງພຣະພຸດທະເຈົ້າເປັນສະຣະນະ ບໍ່ເຖິງພຣະທຳເປັນສະຣະນະ ບໍ່ເຖິງພຣະສົງເປັນສະຣະນະ ບໍ່ງົດເວັ້ນຈາກການຂ້າສັດ ບໍ່ງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ບໍ່ງົດເວັ້ນຈາກການປະພຶດຜິດໃນກາມ ບໍ່ງົດເວັ້ນຈາກການເວົ້າຕົວະ ບໍ່ງົດເວັ້ນຈາກການດື່ມນ້ຳເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເປັນຜູ້ທຸສິນ ມີທຳຊົ່ວຊາມ ອະວະຊາຕະບຸດເປັນແນວນີ້

ພິກຂຸທັງຫຼາຍ ບຸດ ໓ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ບັນດິດຍ່ອມປາຖະໜາອະຕິຊາຕະບຸດແລະອະນຸຊາຕະບຸດ
ບໍ່ປາຖະໜາອະວະຊາຕະບຸດ ເຊິ່ງມີແຕ່ທຳລາຍວົງຕະກູນ
ບຸດ ໓ ຈຳພວກນີ້ທີ່ນັ້ນ ມີຢູ່ໃນໂລກນີ້
ສ່ວນບຸດຜູ້ເປັນອຸປາສົກ ເຖິງພ້ອມດ້ວຍສັດທາແລະສິນ
ຮູ້ຄວາມປະສົງຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່
ຍ່ອມຮຸ່ງເຮືອງໃນໝູ່ບໍລິສັດ ຄືດວງຈັນພົ້ນຈາກກ້ອນເພື້ອ ສັນນັ້ນ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ປຸດຕະສູດທີ ໔ ຈົບ**

## ๕. ອະວຸດຖິກະສູດ

## ວ່າດ້ວຍບຸກຄົນປຽບດ້ວຍຝົນ

[໗໔] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ບຸກຄົນ ໓ ຈຳພວກໃດແດ່ ຄື

໑. ບຸກຄົນຜູ້ປຽບດ້ວຍຝົນບໍ່ຕົກ
໔. ບຸກຄົນຜູ້ປຽບດ້ວຍຝົນຕົກໃນພື້ນທີ່ບາງສ່ວນ
໓. ບຸກຄົນຜູ້ປຽບດ້ວຍຝົນຕົກໃນພື້ນທີ່ທົ່ວໄປ

ບຸກຄົນຜູ້ປຽບດ້ວຍຝົນບໍ່ຕົກ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ບໍ່ໃຫ້ເຂົ້າ ນ້ຳ ຜ້າ ຍານພາຫະນະ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ແກ່ສະມະນະ ພາມ ຄົນຍາກເຂັນ ຄົນໝົດສະບຽງທາງ ຄົນພະເນຈອນ ແລະຄົນຂໍທານທຸກໝູ່ເຫຼົ່າ ບຸກຄົນຜູ້ປຽບດ້ວຍຝົນບໍ່ຕົກເປັນແນວນີ້

ບຸກຄົນຜູ້ປຽບດ້ວຍຝົນຕົກໃນພື້ນທີ່ບາງສ່ວນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ໃຫ້ເຂົ້າ ນ້ຳ ຜ້າ ຍານພາຫະນະ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ແກ່ສະມະນະ ພາມ ຄົນຍາກເຂັນ ຄົນໝົດສະບຽງທາງ ຄົນພະເນຈອນ ແລະຄົນຂໍທານລາງພວກ ແຕ່ບໍ່ໃຫ້ແກ່ຄົນລາງພວກ ບຸກຄົນຜູ້ປຽບດ້ວຍຝົນຕົກໃນພື້ນທີ່ບາງສ່ວນເປັນແນວນີ້

ບຸກຄົນຜູ້ປຽບດ້ວຍຝົນຕົກໃນພື້ນທີ່ທົ່ວໄປ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ໃຫ້ເຂົ້າ ນ້ຳ ຜ້າ ຍານພາຫະນະ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ແກ່ສະມະນະ ພາມ ຄົນຍາກເຂັນ ຄົນໝົດສະບຽງທາງ ຄົນພະເນຈອນ ແລະຄົນຂໍທານທົ່ວທຸກໝູ່ທຸກເຫຼົ່າ ບຸກຄົນຜູ້ປຽບດ້ວຍຝົນຕົກໃນພື້ນທີ່ທົ່ວໄປເປັນແນວນີ້

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ບຸກຄົນໄດ້ພົບສະມະນະ ພາມ ຄົນຍາກເຂັນ
ຄົນໝົດສະບຽງທາງ ຄົນພະເນຈອນ ແລະຄົນຂໍທານແລ້ວ
ບໍ່ຍອມແບ່ງເຂົ້າ ນ້ຳ ແລະເຄື່ອງໃຊ້ສອຍອື່ນ ໆ ໃຫ້
ປັນຍາຊົນຮຽກຄົນຕ່ຳຊາມ ໃຈແຄບເຊັ່ນນັ້ນວ່າ
ເປັນຜູ້ປຽບດ້ວຍຝົນບໍ່ຕົກ
ບຸກຄົນບໍ່ໃຫ້ເຂົ້ານ້ຳເປັນຕົ້ນແກ່ສະມະນະ ພາມເປັນຕົ້ນລາງພວກ

ແຕ່ໃຫ້ແກ່ລາງພວກ
ປັນຍາຊົນຮຽກຜູ້ນັ້ນວ່າ ເປັນຜູ້ປຽບດ້ວຍຝົນຕົກໃນພື້ນທີ່ບາງສ່ວນ
ຄົນທີ່ເຂົາອອກປາກຂໍໄດ້ງ່າຍ ມັກຊ່ວຍເຫຼືອຄົນໂດຍທົ່ວໜ້າ
ມີໃຈເບີກບານ ແຈກຈ່າຍສິ່ງຂອງ
ປາກກໍເວົ້າແຕ່ຄຳວ່າ ຈົ່ງໃຫ້ ຈົ່ງໃຫ້
ບຸກຄົນລາງຄົນໃນໂລກນີ້ ເປັນຄົນແບບນັ້ນ
ຮິບໂຮມຊັບທີ່ຕົນຫາມາໄດ້ດ້ວຍຄວາມດຸໝັ່ນຂະຫຍັນພຽນໂດຍຖືກຕ້ອງຕາມທຳ
ນຳມາລ້ຽງວະນິພົກຜູ້ມາເຖິງ ໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳ
ຄືກ້ອນເພື້ອຝົນສົ່ງສຽງຮ້ອງຄຳຣາມເຮັດໃຫ້ຝົນຕົກ
ຈົນນ້ຳໄຫຼນອງເຕັມທັງບ່ອນໂນນແລະບ່ອນຫຼຸບ ສັນນັ້ນ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບບນີ້ແລ

**ອະວຸດຖິກະສູດທີ ໖ ຈົບ**

# ໗. ສຸຂະປັດຖະນາສູດ

## ວ່າດ້ວຍຜູ້ປາຖະໜາຄວາມສຸກ

[໗໖] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບບນີ້

ພິກຂຸທັງຫຼາຍ ບັນດິດເມື່ອປາຖະໜາຄວາມສຸກ ໓ ປະການນີ້ ເພິ່ງຮັກສາສິນ
ຄວາມສຸກ ໓ ປະການ ອັນໃດແດ່ ຄື

໑. ເມື່ອປາຖະໜາຄວາມສຸກວ່າ ຂໍຄວາມສັນເສີນ ຈົ່ງມາເຖິງເຮົາ ເພິ່ງຮັກສາສິນ
໒. ເມື່ອປາຖະໜາຄວາມສຸກວ່າ ຂໍໂພຄະສົມບັດທັງຫຼາຍ ຈົ່ງເກີດຂຶ້ນແກ່ເຮົາ ເພິ່ງຮັກສາສິນ
໓. ເມື່ອປາຖະໜາຄວາມສຸກວ່າ ຫຼັງຈາກຕາຍແລ້ວ ເຮົາຈັກໄປເກີດໃນສຸກຄະຕິໂລກສະຫວັນ ເພິ່ງຮັກສາສິນ

ພິກຂຸທັງຫຼາຍ ບັນດິດເມື່ອປາຖະໜາຄວາມສຸກ ໓ ປະການນີ້ແລ ເພິ່ງຮັກສາສິນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ນັກປາດ ເມື່ອປາຖະໜາຄວາມສຸກ ໓ ປະການ ຄື

ຄວາມສັນເສີນ ການໄດ້ຄວາມດີໃຈ໌
ແລະການຕາຍໄປເກີດໃນສະຫວັນ ເພິ່ງຮັກສາສິນ໌
ບຸກຄົນແມ່ນບໍ່ເຮັດບາບ ແຕ່ຍັງຄົບຄົນເຮັດບາບ
ກໍຕ້ອງຖືກຣະແວງສົງໄສໃນບາບເລື້ອຍໄປ
ແລະໄດ້ຮັບຄຳຕຳໜິຕິຕຽນຫຼວງຫຼາຍ
ບຸກຄົນເຮັດຄົນເຊັ່ນໃດໃຫ້ເປັນມິດ
ແລະຄົບສະນິດຄົນເຊັ່ນໃດ ເຂົາກໍເປັນເຊັ່ນຄົນນັ້ນ
ຍ້ອນການຢູ່ນຳກັນເປັນເຊັ່ນນັ້ນ
ຄົນຊົ່ວເມື່ອມາຄົບມາກ່ຽວຂ້ອງກັບຄົນດີທົ່ວໄປ
ຫຼືຄົນດີຫຼົງໄປຄົບໄປກ່ຽວຂ້ອງເຂົ້າ
ຍ່ອມພອຍເຮັດໃຫ້ຄົນດີເປິເປື້ອນບາບໄປນຳ
ຄືລູກສອນອາບຢາພິດ ຖືກຢາພິດເປິເປື້ອນແລ້ວ
ຍ່ອມທຳລາຍແລ່ງລູກສອນທີ່ສະອາດໃຫ້ເປິເປື້ອນໄປນຳ ສັນນັ້ນ
ຍ້ອນຢ້ານການເປິເປື້ອນບາບ
ຜູ້ມີປັນຍາ ຈຶ່ງບໍ່ຄົບຄົນຊົ່ວເປັນມິດເລີຍ
ໃບຫຍ້າຄາທີ່ຄົນນຳມາໃຊ້ຫໍ່ປາເນົ່າ
ກໍພອຍເໝັນເນົ່າສົ່ງກິ່ນຟຸ້ງຕາມໄປນຳ ສັນໃດ
ການຄົບຄົນພານ ກໍສັນນັ້ນ
ໃບໄມ້ທັງຫຼາຍທີ່ຄົນນຳມາຫໍ່ເກາດສະໜາ
ກໍພອຍມີກິ່ນຫອມຟຸ້ງຕາມໄປນຳ ສັນໃດ
ການຄົບບັນດິດ ກໍສັນນັ້ນ
ຍ້ອນແນວນັ້ນ ບັນດິດຮູ້ຜົນດີຜົນເສຍທີ່ຈະເກີດແກ່ຕົນ
ຄືໃບໄມ້ທີ່ໃຊ້ຫໍ່ແລ້ວ ບໍ່ຄວນຄົບອະສັດຕະບຸຣຸດ
ຄວນຄົບແຕ່ສັດຕະບຸຣຸດທໍ່ນັ້ນ
ຍ້ອນວ່າ ອະສັດຕະບຸຣຸດຍ່ອມນຳພາໃຫ້ຕົກນະຣົກ
ສ່ວນສັດຕະບຸຣຸດຍ່ອມນຳພາໃຫ້ເຂົ້າເຖິງສຸກຄະຕິ
ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ສຸຂະປັດຖະນາສູດທີ ໗ ຈົບ**

## ໗. ພິທຸຣະສູດ
## ວ່າດ້ວຍສິ່ງທີ່ຕ້ອງແຕກສະຫຼາຍໄປເປັນທຳມະດາ

[໗໗] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ຮ່າງກາຍນີ້ຕ້ອງແຕກສະຫຼາຍໄປ ວິນຍານ[໑] ມີຄວາມເສື່ອມໄປເປັນ ທຳມະດາ ອຸປະທິທັງໝົດ[໒]ລ້ວນບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ບຸກຄົນຮູ້ວ່າຮ່າງກາຍນີ້ຕ້ອງແຕກສະຫຼາຍໄປ
ແລະວິນຍານກໍຕ້ອງເສື່ອມໄປ
ເຫັນໄພໃນອຸປະທິທັງຫຼາຍແລ້ວ
ຍ່ອມລ່ວງພົ້ນຄວາມເກີດ ແລະຄວາມຕາຍໄດ້
ບັນລຸເຖິງທຳເປັນທີ່ສະງົບຢ່າງຍິ່ງແລ້ວ
ຊື່ວ່າອົບຮົມຕົນໄດ້ແລ້ວ ຄອຍຖ້າຢູ່ແຕ່ເວລາທີ່ນັ້ນ[໓]

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ພິທຸຣະສູດທີ ໗ ຈົບ**

## ໘. ທາຕຸໂສສັງສັນທະນະສູດ
## ວ່າດ້ວຍສັດທັງຫຼາຍສະເໝີກັນໂດຍທາດ

[໗໘] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ເມື່ອວ່າໂດຍທາດ[໑] ສັດທັງຫຼາຍເຂົ້າກັນໄດ້ ຄົບກັນໄດ້ກັບສັດ ຄື ສັດທີ່ມີນິໄສຊົ່ວເຂົ້າກັນໄດ້ ຄົບກັນໄດ້ກັບສັດທີ່ມີນິໄສຊົ່ວ ສັດທີ່ມີນິໄສດີງາມເຂົ້າກັນໄດ້ ຄົບກັນໄດ້ກັບສັດທີ່ມີນິໄສດີງາມ

ພິກຂຸທັງຫຼາຍ ແມ່ນໃນອະດີດຕະການ ເມື່ອວ່າໂດຍທາດ ສັດທັງຫຼາຍກໍເຂົ້າກັນໄດ້ ຄົບກັນໄດ້ກັບສັດ ຄື ສັດທີ່ມີນິໄສຊົ່ວເຂົ້າກັນໄດ້ ຄົບກັນໄດ້ກັບສັດທີ່ມີນິໄສຊົ່ວ ສັດທີ່ມີນິໄສດີງາມເຂົ້າກັນໄດ້ ຄົບກັນໄດ້ກັບສັດທີ່ມີນິໄສດີງາມ

ພິກຂຸທັງຫຼາຍ ແມ່ນໃນອະນາຄົດຕະການ ເມື່ອວ່າໂດຍທາດ ສັດທັງຫຼາຍກໍຈະເຂົ້າກັນໄດ້ ຄົບກັນໄດ້ກັບສັດ ຄື ສັດທີ່ມີນິໄສຊົ່ວເຂົ້າກັນໄດ້ ຄົບກັນໄດ້ກັບສັດທີ່ມີນິໄສຊົ່ວ ສັດທີ່ມີນິໄສດີງາມເຂົ້າກັນໄດ້ ຄົບກັນໄດ້ກັບສັດທີ່ມີນິໄສດີງາມ

ພິກຂຸທັງຫຼາຍ ແມ່ນໃນປັດຈຸບັນການນີ້ ເມື່ອວ່າໂດຍທາດ ສັດທັງຫຼາຍກໍເຂົ້າກັນໄດ້ ຄົບກັນໄດ້ກັບສັດ ຄື ສັດທີ່ມີນິໄສຊົ່ວເຂົ້າກັນໄດ້ ຄົບກັນໄດ້ກັບສັດທີ່ມີນິໄສຊົ່ວ ສັດທີ່ມີນິໄສດີງາມເຂົ້າກັນໄດ້ ຄົບກັນໄດ້ກັບສັດທີ່ມີນິໄສດີງາມ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ຍ້ອນການຄຸກຄີກັນ[១] ກິເລດຈຶ່ງເກີດຂຶ້ນ
ຍ້ອນການບໍ່ຄຸກຄີກັນ ກິເລດຈຶ່ງຂາດໄປ
ບຸກຄົນລົງເຮືອນ້ອຍ ຫວັງຈະຂ້າມມະຫາສະມຸດ
ຍັງບໍ່ທັນເຖິງຝັ່ງກໍຈົມລົງໃນມະຫາສະມຸດ ສັນໃດ
ບຸກຄົນແມ່ນມີຄວາມເປັນຢູ່ດີ ອາໄສຄົນຂີ້ຄ້ານ
ກໍຈົມລົງໃນສັງສາຣະວັດໄດ້ ສັນນັ້ນ
ຍ້ອນແນວນັ້ນ ບຸກຄົນຄວນເວັ້ນຄົນຂີ້ຄ້ານ
ຜູ້ມີຄວາມພຽນຫຍ່ອນຍານນັ້ນ
ຄວນຄົບພຣະອະຣິຍະທັງຫຼາຍ ຜູ້ສະຫງັດ ມີໃຈໝັ້ນຄົງ
ເພ່ງພິນິດຢູ່ ຜາຣົບຄວາມພຽນເປັນປະຈຳ ເປັນບັນດິດ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ທາຕຸໂສສັງສັນທະນະສູດທີ ៩ ຈົບ**

# ໑໐. ປະຣິຫານະສູດ

## ວ່າດ້ວຍທຳເປັນເຫດແຫ່ງຄວາມເສື່ອມ

[៨៧] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທຳ ໓ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ
ທຳ ໓ ປະການ ອັນໃດແດ່ ຄື
ພິກຂຸຜູ້ເປັນເສຂະໃນທຳວິໄນນີ້

໑. ເປັນຜູ້ມັກວຽກງານ[១] ຍິນດີໃນວຽກງານ ໝັ່ນປະກອບຄວາມເປັນຜູ້ມັກວຽກງານ
໒. ເປັນຜູ້ມັກການໂອ້ລົມ ຍິນດີໃນການໂອ້ລົມ ໝັ່ນປະກອບຄວາມເປັນຜູ້ມັກການໂອ້ລົມ
໓. ເປັນຜູ້ມັກການນອນຫຼັບ ຍິນດີໃນການນອນຫຼັບ ໝັ່ນປະກອບຄວາມເປັນຜູ້ມັກການນອນຫຼັບ

ທຳ ໓ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ
ພິກຂຸທັງຫຼາຍ ທຳ ໓ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ
ທຳ ໓ ປະການ ອັນໃດແດ່ ຄື
ພິກຂຸຜູ້ເປັນເສຂະໃນທຳວິໄນນີ້

໑. ເປັນຜູ້ບໍ່ມັກວຽກງານ ບໍ່ຍິນດີໃນວຽກງານ ບໍ່ໝັ່ນປະກອບຄວາມເປັນຜູ້ມັກວຽກງານ
໒. ເປັນຜູ້ບໍ່ມັກການໂອ້ລົມ ບໍ່ຍິນດີໃນການໂອ້ລົມ ບໍ່ໝັ່ນປະກອບຄວາມ ເປັນຜູ້ມັກການໂອ້ລົມ
໓. ເປັນຜູ້ບໍ່ມັກການນອນຫຼັບ ບໍ່ຍິນດີໃນການນອນຫຼັບ ບໍ່ໝັ່ນປະກອບ ຄວາມເປັນຜູ້ມັກການນອນຫຼັບ

ທຳ ໓ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ພິກຂຸມັກວຽກງານ ຍິນດີໃນການໂອ້ລົມ
ມັກການນອນຫຼັບ ມີຈິດຟຸ້ງຊ່ານ ແນວນີ້
ຈຶ່ງບໍ່ຄວນເພື່ອຈະບັນລຸອະຣະຫັດຕະຜົນອັນປະເສີດໄດ້
ຍ້ອນແນວນັ້ນ ພິກຂຸຈຶ່ງຄວນເປັນຜູ້ເຮັດກິດແຕ່ໜ້ອຍ
ນອນຫຼັບແຕ່ພໍສົມຄວນ ມີຈິດບໍ່ຟຸ້ງຊ່ານ ແນວນີ້
ຈຶ່ງຄວນເພື່ອຈະບັນລຸອະຣະຫັດຕະຜົນອັນປະເສີດໄດ້

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ປະຣິຫານະສູດທີ ໑໐ ຈົບ**

**ຕະຕິຍະວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໔. ຈະຕຸດຖະວັກ

## ໝວດທີ ໔

## ໑. ວິຕັກກະສູດ

### ວ່າດ້ວຍອະກຸສົນວິຕົກ

[໙໐] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ອະກຸສົນວິຕົກ ໓ ປະການນີ້

ອະກຸສົນວິຕົກ ໓ ປະການ ອັນໃດແດ່ ຄື

໑. ວິຕົກທີ່ກ່ຽວກັບຄວາມບໍ່ຕ້ອງການໃຫ້ຜູ້ອື່ນດູໝິ່ນຕົນ
໒. ວິຕົກທີ່ກ່ຽວກັບລາບສັກກາຣະແລະການສັນເສີນ
໓. ວິຕົກທີ່ກ່ຽວກັບຄວາມອິດູໃນຄົນອື່ນ

ພິກຂຸທັງຫຼາຍ ອະກຸສົນວິຕົກ ໓ ປະການນີ້ແລ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ບຸກຄົນຜູ້ປະກອບດ້ວຍວິຕົກທີ່ບໍ່ຕ້ອງການໃຫ້ຜູ້ອື່ນດູໝິ່ນຕົນ
ເປັນຜູ້ໜັກໃນລາບສັກກາຣະແລະການສັນເສີນ
ມີປີກກະຕີຍິນດີກັບພວກອຳມາດ
ຍ່ອມຢູ່ຫ່າງໄກຈາກທຳເປັນທີ່ສິ້ນສຸດໄປແຫ່ງສັງໂຍດ

ພິກຂຸໃນທຳວິໄນນີ້ ລະຖິ້ມບຸດ ສັດລ້ຽງ
ການແຕ່ງງານ ແລະຄວາມຫ່ວງໃຍໄດ້ ແນວນີ້
ຈຶ່ງຄວນເພື່ອຈະບັນລຸອະຣະຫັດຕະຜົນອັນປະເສີດໄດ້

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ວິຕັກກະສູດທີ ໑ ຈົບ**

## ໔. ສັກກາຣະສູດ

## ວ່າດ້ວຍຜູ້ຖືກສັກກາຣະຄອບງຳຈິດ

[໗໑] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ເຮົາໄດ້ເຫັນເຫຼົ່າສັດທີ່ຖືກສັກກາຣະຄອບງຳຍ່ຳຍີຈິດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ເຮົາໄດ້ເຫັນເຫຼົ່າສັດທີ່ຖືກຄວາມເສື່ອມສັກກາຣະຄອບງຳຍ່ຳຍີຈິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ເຮົາໄດ້ເຫັນເຫຼົ່າສັດທີ່ຖືກສັກກາຣະແລະຄວາມເສື່ອມສັກກາຣະທັງສອງຄອບງຳຍ່ຳຍີຈິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ຄຳທີ່ວ່າ ເຮົາໄດ້ເຫັນເຫຼົ່າສັດທີ່ຖືກສັກກາຣະຄອບງຳຍ່ຳຍີຈິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ເຮົາໄດ້ເຫັນເຫຼົ່າສັດທີ່ຖືກຄວາມເສື່ອມສັກກາຣະຄອບງຳຍ່ຳຍີຈິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ເຮົາໄດ້ເຫັນເຫຼົ່າສັດທີ່ຖືກສັກກາຣະແລະຄວາມເສື່ອມສັກກາຣະທັງສອງຄອບງຳຍ່ຳຍີຈິດ ຫຼັງຈາກ ຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ນັ້ນ ເຮົາບໍ່ໄດ້ກ່າວຍ້ອນຮັບຟັງມາຈາກສະມະນະຫຼືພາມອື່ນ ໆ ເລີຍ

ພິກຂຸທັງຫຼາຍ ແທ້ຈິງແລ້ວ ເຮົາຮູ້ເອງ ເຫັນເອງ ຊາບເອງທັງນັ້ນ ຈຶ່ງກ່າວຄຳນີ້ວ່າ ເຮົາໄດ້ເຫັນເຫຼົ່າສັດທີ່ຖືກສັກກາຣະຄອບງຳຍ່ຳຍີຈິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ເຮົາໄດ້ເຫັນເຫຼົ່າສັດທີ່ຖືກຄວາມເສື່ອມສັກກາຣະຄອບງຳຍ່ຳຍີຈິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ເຮົາໄດ້ເຫັນເຫຼົ່າສັດທີ່ຖືກສັກ

ກາຣະແລະຄວາມເສື່ອມສັກກາຣະທັງສອງຄອບງຳຍ່ຳຍີຈິດ ຫຼັງຈາກຕາຍແລ້ວ ຈະໄປເກີດ ໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ສະມາທິຂອງພິກຂຸໃດ ຜູ້ມີປົກກະຕິຢູ່ດ້ວຍຄວາມບໍ່ຜະໝາດ
ຍ່ອມຫວັ່ນໄຫວດ້ວຍເຫດ ໒ ປະການ ຄື
(໑) ດ້ວຍມີຜູ້ສັກກາຣະ (໒) ດ້ວຍບໍ່ມີຜູ້ສັກກາຣະ
ພິກຂຸນັ້ນຜູ້ເຂົ້າຊານ ມີຄວາມພຽນຕໍ່ເນື່ອງ
ພິຈາລະນາເຫັນດ້ວຍປັນຍາທີ່ສຸຂຸມ
ຍິນດີໃນທຳເປັນທີ່ສິ້ນສຸດໄປແຫ່ງອຸປາທານ[໑]
ນັກປາດທັງຫຼາຍຮຽກວ່າ ສັດຕະບຸຣຸດ[໒]

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ສັກກາຣະສູດທີ ໒ ຈົບ**

## ໑. ເທວະສັດທະສູດ
## ວ່າດ້ວຍການອອກສຽງຂອງເທວະດາ

[໗໒] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ເທວະດາອາໄສໂອກາດ ໑ ໂອກາດ ຈຶ່ງເປ່ງສຽງອອກໄປໃນໝູ່ເທວະດາ ໂອກາດ ໑ ໂອກາດ ອັນໃດແດ່ ຄື

໑. ໂອກາດທີ່ອະຣິຍະສາວົກແຖຜົມ ແຖໜວດ ນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ ເທວະດາຍ່ອມເປ່ງສຽງອອກໄປໃນໝູ່ ເທວະດາວ່າ ອະຣິຍະສາວົກນີ້ຕັ້ງໃຈຈະເຮັດສົງຄາມກັບກິເລດມານ ນີ້ເປັນສຽງ ຂອງເທວະດາຂໍ້ທີ ໑ ທີ່ເປ່ງອອກໄປຍ້ອນອາໄສໂອກາດ

໒. ໂອກາດທີ່ອະຣິຍະສາວົກ ພໍ່າເພັງພຽນດ້ວຍການຈະເລີນໂພທິປັກຂິຍະທຳ ໗ ໝວດ ເທວະດາຍ່ອມເປ່ງສຽງອອກໄປໃນໝູ່ເທວະດາວ່າ ອະຣິຍະສາວົກນີ້ກຳລັງຜະຈົນກັບກິເລດມານ ນີ້ເປັນສຽງຂອງເທວະດາຂໍ້ທີ ໒ ທີ່ເປ່ງອອກໄປຍ້ອນອາໄສໂອກາດ

๓. ໂອກາດທີ່ອະຣິຍະສາວົກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸ ບັນ ເທວະດາ ຍ່ອມເປ່ງສຽງອອກໄປໃນໝູ່ເທວະດາວ່າ ອະຣິຍະສາວົກນີ້ຊະນະສົງຄາມແລ້ວ ເອົາຊະນະໄດ້ຂາດ ຈຶ່ງຄອບຄອງຕຳແໜ່ງຄວາມເປັນໃຫຍ່ໃນສົງຄາມນັ້ນ ໆ ແລ ນີ້ເປັນສຽງຂອງເທວະດາຂໍ້ທີ ๓ ທີ່ເປ່ງອອກໄປຍ້ອນອາໄສໂອກາດ

ພິກຂຸທັງຫຼາຍ ເທວະດາອາໄສໂອກາດ ๓ ໂອກາດນີ້ແລ ຈຶ່ງເປ່ງສຽງອອກໄປໃນໝູ່ເທວະດາ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ແມ່ນເທວະດາເຫັນສາວົກຂອງພຣະສຳມາສຳພຸດທະເຈົ້າ
ຜູ້ຊະນະສົງຄາມກິເລດ ຊົງຄຸນນະທຳຍິ່ງໃຫຍ່
ປາສະຈາກຄວາມສະທົກສະທ້ານ
ຍ່ອມນອບນ້ອມພ້ອມກັບກ່າວວ່າ

ທ່ານບຸຣຸດອາຊາໄນ ຂໍນອບນ້ອມຕໍ່ທ່ານ
ຜູ້ຄອບງຳກິເລດທີ່ຊະນະໄດ້ຍາກ
ເອົາຊະນະເສນາຂອງມັດຈຸຣາດອັນບໍ່ມີໃຜກັ້ນໄວ້ໄດ້ ດ້ວຍວິໂມກ

ເທວະດາຍ່ອມນອບນ້ອມທ່ານຜູ້ມີຈິດບັນລຸອະຣະຫັດຕະຜົນແລ້ວ
ດ້ວຍເຫດດັ່ງກ່າວມານີ້ແລ
ຍ້ອນທ່ານບໍ່ຕົກຢູ່ໃນອຳນາດແຫ່ງມັດຈຸຣາດ
ເທວະດາຈຶ່ງນອບນ້ອມຕໍ່ທ່ານ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ເທວະສັດທະສູດທີ ๓ ຈົບ**

# ๔. ປັນຈະປຸບພະນິມິດຕະສູດ

## ວ່າດ້ວຍບຸບພະນິມິດ ๕ ປະການ

[๒๓] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ໃນເວລາທີ່ເທບພະບຸດຈະຈຸຕິຈາກໝູ່ເທບ ຍ່ອມຜາກົດບຸບພະນິມິດ ๕ ປະການ ຄື

໑. ດອກໄມ້ທີ່ປະດັບຫ່ຽວແຫ້ງ
໒. ເຄື່ອງປະດັບທີ່ໃສ່ໃສ່ໝອງຈາງລົງ
໓. ເຫື່ອໄຫຼອອກຈາກຂີ້ແຮ້
໔. ຜິວພັນເສົ້າໝອງຜາກົດທີ່ກາຍ
໕. ເທບພະບຸດນັ້ນຈະໝົດຄວາມຍິນດີໃນທິບພະສົມບັດຂອງຕົນ

ເທວະດາຮູ້ວ່າ ເທບພະບຸດນີ້ຈະຈຸຕິ ກໍພອຍຍິນດີອວຍພອນໃຫ້ ໓ ປະການ ຄື

໑. ທ່ານຈາກເທວະໂລກນີ້ໄປແລ້ວ ຂໍໃຫ້ໄດ້ໄປເກີດໃນພູມທີ່ດີ
໒. ທ່ານໄດ້ໄປເກີດໃນພູມທີ່ດີແລ້ວ ຂໍໃຫ້ໄດ້ລາບອັນດີ
໓. ທ່ານເມື່ອໄດ້ລາບອັນດີແລ້ວ ຂໍໃຫ້ດຳລົງຕົນຢູ່ດ້ວຍດີ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ການໄປເກີດໃນພູມທີ່ດີຂອງເທວະດາເປັນແນວໃດ? ການໄດ້ລາບ ອັນດີຂອງເທວະດາເປັນແນວໃດ? ການດຳລົງຕົນຢູ່ດ້ວຍດີຂອງເທວະດາເປັນແນວໃດ? ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸທັງຫຼາຍ ການເກີດເປັນມະນຸດ ຊື່ວ່າເປັນການໄປເກີດໃນພູມທີ່ດີຂອງເທວະດາ ການທີ່ເທບພະບຸດລົງມາເກີດເປັນມະນຸດແລ້ວໄດ້ຄວາມສັດທາໃນທຳວິໄນທີ່ຕະຖາຄົດປະກາດໄວ້ ນີ້ຊື່ວ່າເປັນການໄດ້ລາບອັນດີຂອງເທວະດາ ກໍຄວາມສັດທາຂອງເທບພະບຸດນັ້ນແລ ຕັ້ງໝັ້ນ ມີເຫດເກີດ ຢັ່ງລົງ ໝັ້ນຄົງ ອັນສະມະນະພາມເທວະດາ ມານພົມ ຫຼືໃຜ ໆ ໃນໂລກບໍ່ສາມາດເຮັດໃຫ້ຄອນແຄນໄປໄດ້ ນີ້ຊື່ວ່າ ເປັນການດຳລົງຕົນຢູ່ດ້ວຍດີຂອງເທວະດາ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້

ເມື່ອເທບພະບຸດຈະຈຸຕິຈາກເທວະໂລກ ຍ້ອນສິ້ນອາຍຸ
ເທວະດາຜູ້ພອຍຍິນດີ ຍ່ອມເປັ່ງສຽງອວຍພອນ ໓ ປະການ ຄື
ທ່ານຜູ້ຈະເລີນ ທ່ານຈາກເທວະໂລກນີ້ໄປແລ້ວ
ຂໍໃຫ້ໄປເກີດໃນພູມທີ່ດີ ຄື ຢູ່ຮ່ວມກັບມະນຸດເທີ້ນ
ທ່ານເກີດເປັນມະນຸດແລ້ວ ຂໍໃຫ້ໄດ້ມີສັດທາທີ່ສູງຍິ່ງ
ໃນພຣະສັດທຳເທີ້ນ
ສັດທາຂອງທ່ານນັ້ນຂໍໃຫ້ຕັ້ງໝັ້ນ ມີເຫດເກີດ
ຢັ່ງລົງ ໝັ້ນຄົງໃນສັດທຳ

ທີ່ຕະຖາຄົດປະກາດໄວ້ດີແລ້ວ
ໃຜ ໆ ເຮັດໃຫ້ຄອນແຄນບໍ່ໄດ້ຕະຫຼອດຊີວິດເທີ້ນ
ທ່ານຈົ່ງລະກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດໄດ້ທັງໝົດ
ລວມທັງລະກຳຊົ່ວທີ່ປະກອບດ້ວຍໂທດອື່ນ ໆ
ຈົ່ງທຳຄວາມດີທາງກາຍ ວາຈາໃຫ້ຫຼາຍ
ແລະທຳຄວາມດີທາງໃຈທີ່ປະມານບໍ່ໄດ້ ປາສະຈາກອຸປະທິ
ນອກຈາກນັ້ນ ທ່ານຈົ່ງທຳບຸນ
ທີ່ໃຫ້ເກີດສົມບັດນັ້ນໃຫ້ຫຼາຍ ດ້ວຍການໃຫ້ທານ
ຊັກຊວນຜູ້ອື່ນໃຫ້ດຳລົງຢູ່ໃນສັດທຳ
ໃນພຸດທະສາດສະໜາເທີ້ນ
ເມື່ອເທວະດາຮູ້ແນ່ວ່າ ເທບພະບຸດກຳລັງຈະຈຸຕິ
ຍ່ອມພອຍຍິນດີດ້ວຍການອະນຸເຄາະກ່າວຊວນດັ່ງນີ້ວ່າ
ທ່ານເທບພະບຸດ ທ່ານຈົ່ງຫວນກັບມາເກີດ
ໃນເທວະໂລກນີ້ຢູ່ປະຈຳ ໆ ເທີ້ນ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກ່ຳຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ປັນຈະປຸບພະນິມິດຕະສູດທີ ໔ ຈົບ**

## ໕. ພະຫຸຊະນະຫິຕະສູດ

## ວ່າດ້ວຍບຸກຄົນເກື້ອກູນຊາວໂລກ

[๗๔] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ ເມື່ອເກີດຂຶ້ນໃນໂລກ[๑] ຍ່ອມເກີດຂຶ້ນເພື່ອ ເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນເພື່ອຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍ

ບຸກຄົນ ໓ ຈຳພວກ ຄື

໑. ພຣະຕະຖາຄົດສະເດັດອຸບັດຂຶ້ນໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍ ພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາ ແລະຈະຣະນະສະ

ເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາ ຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຕະຖາຄົດພຣະອົງນັ້ນ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ຊົງປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນ ຄົບຖ້ວນ ນີ້ຄືບຸກຄົນ ຈຳພວກທີ ໑ ເຊິ່ງເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍ

໒. ສາວົກຂອງພຣະຕະຖາຄົດສາດສະດາພຣະອົງນັ້ນ ໆ ເອງ ເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ສາວົກນັ້ນສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດ ບໍລິບູນ ຄົບຖ້ວນ ນີ້ຄືບຸກຄົນຈຳພວກທີ ໒ ເຊິ່ງເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ

໓. ສາວົກຂອງພຣະຕະຖາຄົດສາດສະດາພຣະອົງນັ້ນ ໆ ເອງ ຍັງເປັນພຣະເສຂະ ກຳລັງປະຕິບັດຢູ່ ເປັນພະຫູສູດ ເຖິງພ້ອມດ້ວຍສີນແລະຂໍ້ວັດປະຕິບັດແມ່ນສາວົກນັ້ນ ກໍສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນ ຄົບຖ້ວນ ນີ້ຄືບຸກຄົນຈຳພວກທີ ໓ ເຊິ່ງເມື່ອເກີດຂຶ້ນ ໃນໂລກ ຍ່ອມເກີດຂຶ້ນເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະມະນຸດທັງຫຼາຍ

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ແລ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະມະນຸດທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ພຣະສາດສະດາຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຈັດເປັນບຸກຄົນຈຳພວກທີ ໑ ໃນໂລກ
ພຣະສາວົກຜູ້ຕັດສະຣູ້ຕາມພຣະສາດສະດາພຣະອົງນັ້ນ
ຜູ້ອົບຮົມຕົນແລ້ວ ຈັດເປັນບຸກຄົນຈຳພວກທີ ໒

ພຣະສາວົກອື່ນ ໆ ນອກຈາກນັ້ນ ຜູ້ຍັງເປັນພຣະເສຂະ
ກຳລັງປະຕິບັດຢູ່ ເປັນພະຫູສູດ ເຖິງພ້ອມດ້ວຍສີນແລະຂໍ້ວັດປະຕິບັດ
ຈັດເປັນບຸກຄົນຈຳພວກທີ ໓
ບຸກຄົນ ໓ ຈຳພວກນີ້ເປັນຜູ້ປະເສີດທີ່ສຸດໃນເທວະດາແລະມະນຸດ
ເປັນຜູ້ສ່ອງແສງສະຫວ່າງ ເຜີຍແຜ່ສັດຈະທຳຢູ່
ຍ່ອມໄຂປະຕູເຂົ້າສູ່ນິບພານ

ທ່ານເຫຼົ່ານັ້ນ ຊ່ອຍປົດເປື້ອງຊົນຈຳນວນຫຼາຍອອກຈາກໂຍຄະ
ຊົນທັງຫຼາຍຜູ້ປະຕິບັດຕາມອະຣິຍະມັກ
ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງນຳໝູ່ເວໄນຍະຊົນອອກຈາກພົບ
ຜູ້ບໍ່ມີຜູ້ອື່ນຍິ່ງກວ່າ ຊົງສະແດງໄວ້ດີແລ້ວ
ເປັນຜູ້ບໍ່ຜະໝາດໃນສາສະນະທຳຂອງພຣະສຸຄົດເຈົ້າ
ຍ່ອມເຮັດບ່ອນສຸດແຫ່ງທຸກໃນອັດຕະພາບນີ້ໄດ້

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ພະຫຸຊະນະຫິຕະສູດທີ ໕ ຈົບ**

## ໖. ອະສຸພະນຸປັດສີສູດ

## ວ່າດ້ວຍການພິຈາລະນາກາຍໃຫ້ເຫັນເປັນຂອງບໍ່ງາມ

[໘໕] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງພິຈາລະນາເຫັນຄວາມບໍ່ງາມໃນກາຍຢູ່ສະເໝີເທີ້ນ ຈົ່ງໝັ່ນຈະເລີນອານາປານັດສະຕິ ມຸ້ງສະເພາະອາລົມທີ່ເປັນພາຍໃນຂອງພວກທ່ານ ຈົ່ງພິຈາລະນາເຫັນສະພາວະບໍ່ທ່ຽງໃນສັງຂານທັງປວງຢູ່ສະເໝີເທີ້ນ ເມື່ອທ່ານທັງຫຼາຍພິຈາລະນາເຫັນຄວາມບໍ່

ງາມໃນກາຍຢູ່ສະເໝີ ຍ່ອມລະຣາຄານຸໄສໃນທາດທີ່ສວຍງາມໄດ້ ເມື່ອທ່ານທັງຫຼາຍ ໝັ້ນຈະເລີນອານາປານັດສະຕິ ມຸ້ງສະເພາະອາລົມທີ່ເປັນພາຍໃນຂອງພວກທ່ານ ມິດສາວິຕົກພາຍນອກ ທີ່ເປັນຝ່າຍແຫ່ງຄວາມທຸກກໍຈະບໍ່ມີ ເມື່ອທ່ານທັງຫຼາຍພິຈາລະນາເຫັນສະພາວະບໍ່ທ່ຽງໃນສັງຂານ ທັງປວງຢູ່ສະເໝີ ຍ່ອມລະອະວິດຊາໄດ້ ວິດຊາຍ່ອມເກີດຂຶ້ນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ພິກຂຸຜູ້ມີຄວາມພຽນພິຈາລະນາເຫັນຄວາມບໍ່ງາມໃນກາຍ
ຕັ້ງສະຕິກຳນົດລົມຫັນໃຈເຂົ້າອອກ
ພິຈາລະນາເຫັນພາວະທີ່ສະງົບລະງັບສັງຂານທັງປວງຕະຫຼອດການ
ພິກຂຸນັ້ນແລ ເປັນຜູ້ເຫັນໂດຍຖືກຕ້ອງ
ຍ້ອນເຫດທີ່ນ້ອມຈິດໄປໃນນິບພານທາດນັ້ນ
ຈຶ່ງຊື່ວ່າສຳເລັດອະພິນຍາ ໖ ປະການ
ເປັນຜູ້ສະງົບ ລ່ວງພົ້ນໂຍຄະໄດ້ແລ້ວ ເປັນມຸນີແທ້ຈິງ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

**ອະສຸພະນຸປັດສີສູດທີ ໖ ຈົບ**

## ໗. ທຳມານຸທຳມະປະຕິປັນນະສູດ

## ວ່າດ້ວຍຜູ້ປະຕິບັດທຳສົມຄວນແກ່ທຳ

[໘໖] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ພິກຂຸເມື່ອກ່າວວ່າ ສະພາວະທີ່ສົມຄວນໃດເປັນເຫດໃຫ້ບຸກຄົນເປັນຜູ້ປະຕິບັດທຳສົມຄວນແກ່ທຳດ້ວຍການພະຍາກອນ ສະພາວະທີ່ສົມຄວນນີ້ຊື່ວ່າເປັນທຳທີ່ສົມຄວນແກ່ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳ ຊື່ວ່າກ່າວແຕ່ເລື້ອງທີ່ເປັນທຳທໍ່ນັ້ນ ບໍ່ກ່າວເລື້ອງທີ່ບໍ່ເປັນທຳ ເມື່ອນຶກຊື່ວ່ານຶກເຖິງແຕ່ວິຕົກທີ່ເປັນທຳທໍ່ນັ້ນ ບໍ່ນຶກ ເຖິງວິຕົກທີ່ບໍ່ເປັນທຳ ຫຼືເວັ້ນກິຣິຍາທັງສອງນັ້ນ ຊື່ວ່າເປັນຜູ້ມີອຸເປກຂາ ມີສະຕິ ມີສຳປະຊັນຍະຢູ່

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

พิกขุมีทำเป็นที่มายินดี ยินดีแล้วในทำ
พิจาละนาพิจาระนาเຖິງทำ ธะนึกเຖິງทำยู่
ย่อมบ่เสื่อมจากสัดทำ[๑]
พิกขุเมื่อยืน ย่าງ นั่ງ ຫຼືນອນກໍຕາມ
ຄວບຄຸມຈິດໃຫ້ສະຫງົບຢູ່ພາຍໃນໄດ້
ຍ່ອມບັນລຸຄວາມສະຫງົບແທ້ຈິງ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ທຳມານຸທຳມະປະຕິປັນນະສູດທີ ၇ ຈົບ**

## ๓. ອັນທະກະຣະນະສູດ

## ວ່າດ້ວຍວິຕົກທັງທີ່ເຮັດໃຫ້ມືດມົນແລະບໍ່ມືດມົນ

[໘໗] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ອະກຸສົນວິຕົກ ໓ ປະການນີ້ທຳຄວາມມືດມົນ ບໍ່ເຮັດໃຫ້ເກີດປັນຍາຈັກຂຸ ເຮັດແຕ່ຄວາມບໍ່ຮູ້ ດັບປັນຍາ[໑] ເປັນບໍ່ເກີດແຫ່ງທຸກ ບໍ່ເປັນໄປເພື່ອນິບພານ

ອະກຸສົນວິຕົກ ໓ ປະການ ອັນໃດແດ່ ຄື

໑. ກາມວິຕົກ ທຳຄວາມມືດມົນ ບໍ່ເຮັດໃຫ້ເກີດປັນຍາຈັກຂຸ ເຮັດແຕ່ຄວາມບໍ່ຮູ້ ດັບປັນຍາ ເປັນບໍ່ເກີດແຫ່ງທຸກ ບໍ່ເປັນໄປເພື່ອນິບພານ

໒. ພະຍາບາດວິຕົກ ທຳຄວາມມືດມົນ ບໍ່ເຮັດໃຫ້ເກີດປັນຍາຈັກຂຸ ເຮັດແຕ່ຄວາມບໍ່ຮູ້ ດັບປັນຍາ ເປັນບໍ່ເກີດແຫ່ງທຸກ ບໍ່ເປັນໄປເພື່ອນິບພານ

໓. ວິຫິງສາວິຕົກ ທຳຄວາມມືດມົນ ບໍ່ເຮັດໃຫ້ເກີດປັນຍາຈັກຂຸ ເຮັດແຕ່ຄວາມບໍ່ຮູ້ ດັບປັນຍາ ເປັນບໍ່ເກີດແຫ່ງທຸກ ບໍ່ເປັນໄປເພື່ອນິບພານ

ອະກຸສົນວິຕົກ ໓ ປະການນີ້ແລ ທຳຄວາມມືດມົນ ບໍ່ເຮັດໃຫ້ເກີດປັນຍາຈັກຂຸ ເຮັດແຕ່ຄວາມບໍ່ຮູ້ ດັບປັນຍາ ເປັນບໍ່ເກີດແຫ່ງທຸກ ບໍ່ເປັນໄປເພື່ອນິບພານ

ພິກຂຸທັງຫຼາຍ ກຸສົນວິຕົກ ໓ ປະການນີ້ບໍ່ເຮັດຄວາມມືດມົນ ເຮັດໃຫ້ເກີດປັນຍາຈັກຂຸ ເຮັດໃຫ້ເກີດຄວາມຮູ້ ເຮັດປັນຍາໃຫ້ຈະເລີນ ບໍ່ເປັນບໍ່ເກີດແຫ່ງທຸກ ເປັນໄປເພື່ອນິບພານ

ກຸສົນວິຕົກ ໓ ປະການ ອັນໃດແດ່ ຄື

໑. ເນກຂຳມະວິຕົກ ບໍ່ເຮັດຄວາມມືດມົນ ເຮັດໃຫ້ເກີດປັນຍາຈັກຂຸ ເຮັດໃຫ້ເກີດຄວາມຮູ້ ເຮັດປັນຍາໃຫ້ຈະເລີນ ບໍ່ເປັນບໍ່ເກີດແຫ່ງທຸກ ເປັນໄປເພື່ອນິບພານ

໒. ອັບພະຍາບາດວິຕົກ ບໍ່ເຮັດຄວາມມືດມົນ ເຮັດໃຫ້ເກີດປັນຍາຈັກຂຸ ເຮັດໃຫ້ເກີດຄວາມຮູ້ ເຮັດປັນຍາໃຫ້ຈະເລີນ ບໍ່ເປັນບໍ່ເກີດແຫ່ງທຸກ ເປັນໄປເພື່ອນິບພານ

໓. ອະວິຫິງສາວິຕົກ ບໍ່ເຮັດຄວາມມືດມົນ ເຮັດໃຫ້ເກີດປັນຍາຈັກຂຸ ເຮັດໃຫ້ເກີດຄວາມຮູ້ ເຮັດປັນຍາໃຫ້ຈະເລີນ ບໍ່ເປັນບໍ່ເກີດແຫ່ງທຸກ ເປັນໄປເພື່ອນິບພານ

ກຸສົນວິຕົກ ໓ ປະການນີ້ແລ ບໍ່ເຮັດຄວາມມືດມົນ ເຮັດໃຫ້ເກີດປັນຍາຈັກຂຸ ເຮັດໃຫ້ເກີດຄວາມຮູ້ ເຮັດປັນຍາໃຫ້ຈະເລີນ ບໍ່ເປັນບໍ່ເກີດແຫ່ງທຸກ ເປັນໄປເພື່ອນິບພານ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ພິກຂຸຜູ້ພ່ຳເພັງພຽນ ຄວນນຶກເຖິງກຸສົນວິຕົກ ໓ ປະການ
ແລະຄວນກຳຈັດອະກຸສົນວິຕົກ ໓ ປະການອອກ
ພິກຂຸນັ້ນຍ່ອມເຮັດມິດສາວິຕົກແລະມິດສາວິຈານໃຫ້ສະງົບລົງໄດ້ທັນທີ
ຄືຝົນຕົກເຮັດຝຸ່ນທຸລີທີ່ຟຸ້ງຂຶ້ນໃຫ້ສະງົບຫາຍໄດ້ ສັນນັ້ນ
ພິກຂຸຜູ້ພ່ຳເພັງພຽນນັ້ນ ມີໃຈສະງົບຈາກອະກຸສົນວິຕົກທັງໝົດ
ຍ່ອມບັນລຸສັນຕິບົດ໌ໄດ້ໃນອັດຕະພາບນີ້ແນ່ນອນ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ອັນທະກະຣະນະສູດທີ ໗ ຈົບ**

## ໘. ອັນຕະຣາມະລະສູດ

## ວ່າດ້ວຍທຳເປັນມົນທິນພາຍໃນ

[໗໗] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທຳ ໓ ປະການນີ້ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

ທຳ ໓ ປະການ ອັນໃດແດ່ ຄື

໑. ໂລພະເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

໒. ໂທສະເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

໓. ໂມຫະເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

ພິກຂຸທັງຫຼາຍ ທຳ ໓ ປະການນີ້ແລ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ໂລພະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂລພະເຮັດໃຫ້ຈິດກຳເຣີບ ໂລພະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ)ບໍ່ຮູ້ຈັກໄພນັ້ນ
ຄົນໂລບບໍ່ຮູ້ຈັກຜົນ ຄົນໂລບບໍ່ຮູ້ຈັກເຫດ
ຄວາມໂລບຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ
ສ່ວນຜູ້ໃດລະໂລພະໄດ້
ບໍ່ທະຍານຢາກໃນອາລົມທີ່ເປັນເຫດແຫ່ງຄວາມໂລບ
ໂລພະຈະຖືກອະຣິຍະມັກລະໄດ້ເດັດຂາດໄປຈາກຜູ້ນັ້ນ
ຄືຢາດນ້ຳກິ້ງຕົກຈາກໃບບົວ ສັນນັ້ນ
ໂທສະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂທສະເຮັດໃຫ້ຈິດກຳເຣີບ ໂທສະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ) ບໍ່ຮູ້ຈັກໄພນັ້ນ
ຄົນໂກດບໍ່ຮູ້ຈັກຜົນ ຄົນໂກດບໍ່ຮູ້ຈັກເຫດ
ຄວາມໂກດຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ
ສ່ວນຜູ້ໃດລະໂທສະໄດ້

ບໍ່ຂັດເຄືອງໃນອາລົມທີ່ເປັນເຫດແຫ່ງຄວາມຂັດເຄືອງ
ໂທສະຈະຖືກອະຣິຍະມັກລະໄດ້ເດັດຂາດໄປຈາກຜູ້ນັ້ນ
ຄືໝາກຕານສຸກລຸດຈາກຂວັ້ນ ສັນນັ້ນ
　　ໂມຫະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂມຫະເຮັດຈິດໃຫ້ກຳເຣີບ ໂມຫະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ)ບໍ່ຮູ້ຈັກໄພນັ້ນ
　　ຄົນຫຼົງບໍ່ຮູ້ຈັກຜົນ ຄົນຫຼົງບໍ່ຮູ້ຈັກເຫດ
ຄວາມຫຼົງຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ
　　ສ່ວນຜູ້ໃດລະໂມຫະໄດ້
ບໍ່ລຸ້ມຫຼົງໃນອາລົມທີ່ເປັນເຫດແຫ່ງຄວາມຫຼົງ
ຜູ້ນັ້ນຍ່ອມກຳຈັດໂມຫະທັງໝົດໄດ້ເດັດຂາດ
ຄືດວງອາທິດກຳຈັດຄວາມມືດ ສັນນັ້ນ[๑]

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ອັນຕະຣາມະລະສູດທີ ໙ ຈົບ**

## ໑໐. ເທວະທັດຕະສູດ

## ວ່າດ້ວຍພຣະເທວະທັດຖືກອະສັດທຳຄອບງຳ

[໘໙] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ພຣະເທວະທັດຖືກອະສັດທຳ ໓ ປະການຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ອະສັດທຳ ໓ ປະການ ອັນໃດແດ່ ຄື

໑. ເທວະທັດຖືກຄວາມປາຖະໜາຊົ່ວຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

໒. ເທວະທັດຖືກຄວາມມີມິດຊົ່ວຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

໓. ເມື່ອຍັງມີມັກຜົນທີ່ຄວນເຮັດໃຫ້ສູງຂຶ້ນໄປ ເທວະທັດກັບມາເຖິງຄວາມເສື່ອມ
ເສຍກາງຄັນ ຍ້ອນບັນລຸຄຸນວິເສດຂັ້ນຕ່ຳ

ພິກຂຸທັງຫຼາຍ ເທວະທັດຖືກອະສັດທຳ ໓ ປະການນີ້ແລ ຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ໃຜ ໆ ຢ່າໄດ້ເກີດເປັນຄົນປາຖະໜາຊົ່ວ
ບໍ່ວ່າໃນການໃດ ໆ ໃນໂລກ
ທ່ານທັງຫຼາຍຈົ່ງຮູ້ຈັກເທວະທັດວ່າ
ມີຄະຕິຄືກັບຄົນປາຖະໜາຊົ່ວ

ເທວະທັດເປັນທີ່ຍົກຍ້ອງກັນວ່າ ເປັນບັນດິດ
ເປັນທີ່ຮູ້ກັນວ່າ ໄດ້ອົບຮົມຕົນແລ້ວ
ເຮົາໄດ້ຟັງມາວ່າ ເທວະທັດຄືຮຸ່ງເຮືອງຢູ່ດ້ວຍຍົດ

ເທວະທັດນັ້ນສັ່ງສົມຄວາມຜະໝາດ
ບຽດບຽນຕະຖາຄົດນັ້ນ
ຈຶ່ງຕ້ອງໄປເກີດໃນນະຮົກອະເວຈີ ມີປະຕູ ໔ ດ້ານ
ເປັນຕາຢ້ານຍິ່ງ

ຜູ້ໃດປະທຸດສະຮ້າຍຕໍ່ຄົນທີ່ບໍ່ປະທຸດສະຮ້າຍ
ຜູ້ບໍ່ເຮັດກຳຊົ່ວ
ບາບຍ່ອມຖືກຕ້ອງສະເພາະຜູ້ນັ້ນທໍ່ນັ້ນ

ຜູ້ມີຈິດຄິດປະທຸດສະຮ້າຍ ບໍ່ມີຄວາມເອື້ອເຟື້ອ
ຜູ້ໃດບຽດບຽນຕະຖາຄົດ ຜູ້ສະເດັດໄປດີ
ມີພຣະທະໄທສະງົບ ດ້ວຍການກ່າວຕຳໜິ
ການຕຳໜິພຣະອົງ ຍ່ອມຟັງບໍ່ຂຶ້ນ

ປຽບຄື ຜູ້ທີ່ຕັ້ງໃຈປະທຸດສະຮ້າຍມະຫາສະມຸດ
ດ້ວຍຢາພິດຈຳນວນເປັນໝໍ້
ເຂົາບໍ່ອາດປະທຸດສະຮ້າຍໄດ້ ຍ້ອນມະຫາສະມຸດເປັນຕາຢ້ານ[๑]

ພິກຂຸຜູ້ດຳເນີນຕາມມັກຄາຂອງພຣະພຸດທະເຈົ້າຫຼືພຣະສາວົກ
ເພິ່ງເຖິງຄວາມສິ້ນທຸກໄດ້
ບັນດິດເຮັດພຣະພຸດທະເຈົ້າຫຼືພຣະສາວົກໃຫ້ເປັນກັນລະຍານະມິດ
ແລະຄົບຫາທ່ານເຫຼົ່ານັ້ນ[๑]

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ເທວະທັດຕະສູດທີ ໑໐ ຈົບ**

**ຈະຕຸດຖະວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໕. ປັນຈະມະວັກ

## ໝວດທີ ໕

## ໑. ອັກຄັບປະສາທະສູດ[1]
## ວ່າດ້ວຍຄວາມເຫຼື້ອມໃສໃນສິ່ງທີ່ເລີດ

[໙໐] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ຄວາມເຫຼື້ອມໃສໃນສິ່ງທີ່ເລີດ ໓ ປະການນີ້

ຄວາມເຫຼື້ອມໃສໃນສິ່ງທີ່ເລີດ ໓ ປະການ ຄື

໑. ສັດທັງຫຼາຍທີ່ບໍ່ມີຕີນ ມີສອງຕີນ ມີສີ່ຕີນ ແລະມີຕີນຫຼາຍກໍຕາມ ມີຮູບ ບໍ່ມີຮູບກໍຕາມ ມີສັນຍາ ບໍ່ມີສັນຍາ ຫຼືມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນກໍຕາມ ມີປະມານທໍ່ໃດ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ບັນດິດກ່າວວ່າ ເລີດກວ່າສັດມີປະມານທໍ່ນັ້ນ ບຸກຄົນຜູ້ເຫຼື້ອມໃສໃນພຣະພຸດທະເຈົ້າ ຊື່ວ່າເຫຼື້ອມໃສໃນສິ່ງທີ່ເລີດ ແລະວິບາກທີ່ເລີດຍ່ອມມີແກ່ບຸກຄົນຜູ້ເຫຼື້ອມໃສໃນສິ່ງທີ່ເລີດ

໒. ທຳທີ່ປັດໄຈປຸງແຕ່ງຫຼືທຳທີ່ປັດໄຈບໍ່ປຸງແຕ່ງມີປະມານເທົ່າໃດ ວິຣາຄະ (ຄວາມຄາຍກຳໜັດ) ຄືຄວາມສວ່າງຄວາມເມົາ ຄວາມດັບຄວາມຢາກ ຄວາມຖອນອາໄລ ຄວາມຕັດວັດຕະ ຄວາມສິ້ນຕັນຫາ ຄວາມຄາຍກຳໜັດ ຄວາມດັບທຸກ ນິບພານ ບັນດິດກ່າວວ່າ ເລີດກວ່າທຳເຫຼົ່ານັ້ນ ບຸກຄົນຜູ້ເຫຼື້ອມໃສໃນວິຣາຄະທຳ ຊື່ວ່າເຫຼື້ອມໃສໃນສິ່ງທີ່ເລີດ ແລະວິບາກທີ່ເລີດຍ່ອມມີແກ່ບຸກຄົນຜູ້ເຫຼື້ອມໃສໃນສິ່ງທີ່ເລີດ

ທຳທັງຫຼາຍທີ່ປັດໄຈປຸງແຕ່ງມີປະມານເທົ່າໃດ ອະຣິຍະມັກມີອົງ ໘ ຄື

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໒. ສຳມາສັງກັບປະ | (ຄິດຖືກ) |
| ໓. ສຳມາວາຈາ | (ເຈຣະຈາຖືກ) | ໔. ສຳມາກຳມັນຕະ | (ການງານຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີວິດຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະນຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

ເຮົາກ່າວວ່າ ເລີດກວ່າທຳເຫຼົ່ານັ້ນ ບຸກຄົນຜູ້ເຫຼື້ອມໃສໃນອະຣິຍະມັກມີອົງ ໘ ຊື່ວ່າເຫຼື້ອມໃສໃນສິ່ງທີ່ເລີດ ແລະວິບາກທີ່ເລີດຍ່ອມມີແກ່ບຸກຄົນຜູ້ເສື່ອມໃສໃນສິ່ງທີ່ເລີດ][໑]

໓. ໝູ່ກໍດີ ຄະນະກໍດີ ມີປະມານເທົ່າໃດ ພຣະສົງສາວົກຂອງຕະຖາຄົດ ໄດ້ແກ່ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ[໒] ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ ບັນດິດກ່າວວ່າ ເລີດກວ່າໝູ່ຫຼືຄະນະເຫຼົ່ານັ້ນ ບຸກຄົນຜູ້ເຫຼື້ອມໃສໃນສົງ ຊື່ວ່າເຫຼື້ອມໃສໃນສິ່ງທີ່ເລີດ ແລະວິບາກທີ່ເລີດຍ່ອມມີແກ່ບຸກຄົນຜູ້ເສື່ອມໃສໃນສິ່ງທີ່ເລີດ

ພິກຂຸທັງຫຼາຍ ຄວາມເຫຼື້ອມໃສໃນສິ່ງທີ່ເລີດ ໓ ປະການນີ້ແລ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ບຸນທີ່ເລີດ ຄື ອາຍຸ ວັນນະ ຍົດ ກຽດ ສຸກ ແລະພະລະ
ຍ່ອມຈະເລີນແກ່ບຸກຄົນຜູ້ເຫຼື້ອມໃສ
ຜູ້ຮູ້ທຳທີ່ເລີດໂດຍຄວາມເປັນທຳທີ່ເລີດ
ຜູ້ເຫຼື້ອມໃສໃນພຣະພຸດທະເຈົ້າຜູ້ເລີດ ເຊິ່ງເປັນທັກຂິໄນຍະບຸກຄົນຊັ້ນເລີດ
ຜູ້ເຫຼື້ອມໃສໃນພຣະທຳທີ່ເລີດ ອັນເປັນທີ່ຄາຍຄວາມກຳໜັດ
ແລະ ເປັນທີ່ສະງົບລະງັບ ນຳສຸກມາໃຫ້

ຜູ້ເຫຼື້ອມໃສໃນພຣະສົງຜູ້ເລີດ ເຊິ່ງເປັນນາບຸນອັນປະເສີດ
ໃຫ້ທານແກ່ທ່ານຜູ້ເລີດ
ນັກປາດຕັ້ງໝັ້ນໃນທຳທີ່ເລີດ ໃຫ້ທານແກ່ທ່ານຜູ້ເລີດ
ເກີດເປັນເທວະດາຫຼືມະນຸດກໍຕາມ
ຍ່ອມເຖິງຄວາມເປັນຜູ້ເລີດ ບັນເທີງຢູ່

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ອັກຄັບປະສາທະສູດທີ ໑ ຈົບ**

## ๘. ຊີວະກະສູດ

## ວ່າດ້ວຍຊີວິດຂອງຜູ້ທຸສິນ

[໙໑] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ການທີ່ພິກຂຸທຸສິນທ່ຽວບິນທະບາດລ້ຽງຊີບນີ້ ເປັນການກະທຳທີ່ຕ່ຳຊາມ ການທີ່ພິກຂຸທຸສິນປະພຶດແນວນີ້ຍ່ອມຖືກຊາວໂລກດ່າວ່າ ເຈົ້າຄົນນີ້ ອຸ້ມບາດທ່ຽວຂໍຊາວໂລກລ້ຽງຊີບ

ກຸນລະບຸດ ຕ່າງໆເປັນຜູ້ສຳນຶກໃນເຫດ ອາໄສຄວາມສຳນຶກໃນເຫດ ຈຶ່ງເຂົ້າມາໃຊ້ຊີວິດທ່ຽວຂໍກ້ອນເຂົ້ານີ້ ບໍ່ແມ່ນຖືກພຣະຣາຊາຮັບສັ່ງໃຫ້ນຳໄປຄຸມຂັງ ບໍ່ແມ່ນຖືກພວກໂຈນນຳໄປກັກຂັງ ບໍ່ແມ່ນເປັນລູກໜີ້ ບໍ່ແມ່ນຕົກຢູ່ໃນຫ້ວງອັນຕະລາຍ ບໍ່ແມ່ນມຸ້ງຈະຍຶດເປັນອາຊີບ ແທ້ຈິງ ກຸນລະບຸດເຫຼົ່ານັ້ນເຂົ້າມາບວດດ້ວຍເຫດຜົນວ່າ ພວກເຮົາຕ່າງໆຖືກຄວາມເກີດ ຄວາມແກ່ ຄວາມຕາຍ ຄວາມໂສກ ຄວາມຮ່ຳໄຮ ຄວາມທຸກ ຄວາມເສຍໃຈ ຄວາມຕອມໃຈ ທັບຖົມຄອບງຳ ຈົມຢູ່ໃນທຸກ ສາລະວົນຢູ່ກັບທຸກ ເຮັດແນວໃດນໍ ການເຮັດບ່ອນສຸດກອງທຸກທັງໝົດນີ້ ຈະເພິ່ງຜາກົດໄດ້

ກຸນລະບຸດນີ້ ເປັນຜູ້ບວດແລ້ວ ດ້ວຍເຫດຜົນຕາມທີ່ກ່າວແລ້ວນີ້ ແຕ່ແລ້ວກຸນລະບຸດນັ້ນກັບມີຄວາມລະໂມບ ກຳໜັດຍິນດີຢ່າງແຮງກ້າໃນກາມ ມີຈິດພະຍາບາດ ຄິດປະທຸດສະຮ້າຍຫຼົງລືມສະຕິ ບໍ່ຮູ້ສຶກໂຕ ມີຈິດບໍ່ຕັ້ງໝັ້ນ ກະສັບກະສ່າຍ ບໍ່ສັງລວມອິນຊີ

ພິກຂຸທັງຫຼາຍ ດົ້ນຟືນໃນບ່ອນເຜົາສົບ ຖືກໄຟໄໝ້ທັງດ້ານຫົວແລະທ້າຍ ແລະສູນກາງຍັງເປື້ອນອາຈົມ ຈະໃຊ້ເປັນຟືນໃນເຮືອນຫຼືໃນປ່າກໍບໍ່ໄດ້ ສັນໃດ ບຸກຄົນນີ້ກໍປຽບເຊັ່ນນັ້ນ ເຮົາ

ຮຽກວ່າ ເປັນຄົນເສື່ອມຈາກໂພຄະຂອງຄະລິຫັດ ແລະບໍ່ສາມາດພໍ່າເພັງປະໂຫຍດສໍາລັບຄວາມເປັນສະມະນະໃຫ້ບໍລິບູນໄດ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ຄົນຜູ້ມີສ່ວນຊົ່ວ ເສື່ອມຈາກໂພຄະຂອງຄະລິຫັດ
ທັງຍັງທໍາລາຍປະໂຫຍດຂອງຄວາມເປັນສະມະນະໃຫ້ເສື່ອມສູນສິ້ນໄປ
ຄືດົ້ນຟືນໃນບ່ອນເຜົາສົບມອດໄໝ້ໄປ ສັນນັ້ນ
ພິກຂຸຊົ່ວຈໍານວນຫຼາຍມີຜ້າກາສາວະພັນທີ່ຄໍ
ມີທໍາຊົ່ວຊາມ ບໍ່ສັງລວມ
ຍ່ອມຕົກນະຮົກຍ້ອນບາບກໍາທັງຫຼາຍ
ການກືນກິນກ້ອນເຫຼັກແດງທີ່ຮ້ອນຄືແປວໄຟ
ຍັງດີກວ່າການທີ່ພິກຂຸຜູ້ທຸສີນ ບໍ່ສັງລວມ
ບໍຣິໂພກອາຫານທີ່ຊາວບ້ານເຂົາຖວາຍ໑

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບວນີ້ແລ

**ຊີວິກາສູດທີ ໘ ຈົບ**

## ๓. ສັງຄາຕິກັນນະສູດ

## ວ່າດ້ວຍຜູ້ເກາະຊາຍຜ້າສັງຄາຕິ

[໙໘] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບວນີ້

ພິກຂຸທັງຫຼາຍ ແມ່ນຖ້າພິກຂຸຈັບຊາຍຜ້າສັງຄາຕິແລ້ວຍ່າງນໍາຮອຍຕີນເຮົາ ຕິດຕາມ ໄປທາງຫຼັງ ແຕ່ພິກຂຸນັ້ນມີຄວາມລະໂມບ ກໍາໜັດຍິນດີຢ່າງແຮງກ້າໃນກາມ ມີຈິດພະຍາບາດ ຄິດປະທຸດສະຮ້າຍ ຫຼົງລືມສະຕິ ບໍ່ຮູ້ສຶກໂຕ ມີຈິດບໍ່ຕັ້ງໝັ້ນ ກະສັບກະສ່າຍ ບໍ່ສັງລວມອິນຊີ ແທ້ຈິງແລ້ວພິກຂຸນັ້ນກໍຍັງຊື່ວ່າຢູ່ຫ່າງໄກເຮົາ ເຮົາກໍຫ່າງໄກພິກຂຸນັ້ນ ນັ້ນເປັນຍ້ອນເຫດໃດ ຍ້ອນພິກຂຸນັ້ນຍັງບໍ່ເຫັນທໍາ ເມື່ອບໍ່ເຫັນທໍາຊື່ວ່າບໍ່ເຫັນເຮົາ

ພິກຂຸທັງຫຼາຍ ແມ່ນຖ້າພິກຂຸຢູ່ໄກເຮົາເຖິງ ໑໐໐ ໂຍດ ແຕ່ພິກຂຸນັ້ນບໍ່ມີຄວາມລະໂມບບໍ່ກໍາໜັດຍິນດີຢ່າງແຮງກ້າໃນກາມ ມີຈິດບໍ່ພະຍາບາດ ບໍ່ຄິດປະທຸດສະຮ້າຍ ມີສະຕິຕັ້ງໝັ້ນ ມີ

ຄວາມຮູ້ສຶກໂຕ ມີຈິດຕັ້ງໝັ້ນ ແນ່ວແນ່ ສັງລວມອິນຊີ ແທ້ຈິງແລ້ວ ພິກຂຸນັ້ນກໍຊື່ວ່າຢູ່ໃກ້ເຮົາ ເຮົາກໍຢູ່ໃກ້ພິກຂຸນັ້ນ ນັ້ນເປັນຍ້ອນເຫດໃດ ຍ້ອນພິກຂຸ ນັ້ນເຫັນທຳ ເມື່ອເຫັນທຳ ຊື່ວ່າເຫັນເຮົາ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ບຸກຄົນຜູ້ມັກຫຼາຍ ມີຄວາມຄັບແຄ້ນ
ຕົກຢູ່ໃນອຳນາດຕັນຫາ ຍັງດັບຄວາມຮ້ອນຮົນບໍ່ໄດ້
ເຖິງຈະຕິດຕາມພຣະສຳມາສຳພຸດທະເຈົ້າ
ຜູ້ໝົດຕັນຫາທີ່ເຮັດໃຫ້ຫວັ່ນໄຫວ ຜູ້ຊົງດັບຄວາມຮ້ອນຮົນໄດ້
ຜູ້ນັ້ນຊື່ວ່າມີຄວາມກຳໜັດຍິນດີ
ເຫັນພຣະສຳມາສຳພຸດທະເຈົ້າຜູ້ປາສະຈາກຄວາມກຳໜັດຍິນດີ
ເປັນຜູ້ຢູ່ຫ່າງໄກ³
ສ່ວນບຸກຄົນຜູ້ເປັນບັນດິດ
ພິຈາລະນາຮູ້ທຳ³ດ້ວຍປັນຍາອັນຍິ່ງແລ້ວ
ຕໍ່ມາຈຶ່ງກຳນົດຮູ້ທຳນັ້ນ
ເປັນຜູ້ໝົດກິເລດທີ່ເຮັດໃຫ້ຫວັ່ນໄຫວ ສະງົບລະງັບກິເລດໄດ້ເດັດຂາດ
ຄືແມ່ນ້ຳສະງົບພຽງຍາມສະຫງັດລົມ ສັນນັ້ນ
ຜູ້ນັ້ນບໍ່ຫວັ່ນໄຫວ ດັບຄວາມຮ້ອນຮົນໄດ້ແລ້ວ
ຊື່ວ່າໝົດຄວາມກຳໜັດຍິນດີ
ເຫັນພຣະສຳມາສຳພຸດທະເຈົ້າຜູ້ບໍ່ຊົງມີຄວາມຫວັ່ນໄຫວ
ຊົງດັບຄວາມຮ້ອນຮົນໄດ້
ຊົງປາສະຈາກຄວາມກຳໜັດຍິນດີ ເປັນຜູ້ຢູ່ໃກ້ແທ້

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ສັງຄາຕິກັນນະສູດທີ ໓ ຈົບ**

## ໔. ອັກຄິສູດ

## ວ່າດ້ວຍໄຟກິເລດ

[໙໓] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ໄຟ ໓ ກອງນີ້

ໄຟ ໓ ກອງ ຄື

໑. ໄຟຄືຣາຄະ ໒. ໄຟຄືໂທສະ ໓. ໄຟຄືໂມຫະ

ພິກຂຸທັງຫຼາຍ ໄຟ ໓ ກອງນີ້ແລ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ໄຟຄືຣາຄະ ຍ່ອມເຜົາຜານນໍຣະຊົນຜູ້ກຳໜັດ
ໝົກມຸ້ນຢູ່ໃນກາມທັງຫຼາຍ
ໄຟຄືໂທສະ ຍ່ອມເຜົາຜານນໍຣະຊົນຜູ້ມີຈິດພະຍາບາດ ມັກຂ້າສັດ
ໄຟຄືໂມຫະ ຍ່ອມເຜົາຜານນໍຣະຊົນຜູ້ລຸ້ມຫຼົງ
ບໍ່ສະຫຼາດໃນທຳຂອງພຣະອະຣິຍະ
ໝູ່ສັດ ເມື່ອບໍ່ຮູ້ຈັກໄຟທັງ ໓ ກອງນີ້
ຈຶ່ງຍິນດີຍິ່ງໃນສັກກາຍະ[1]
ບໍ່ພົ້ນຈາກບ້ວງແຫ່ງມານ ສັ່ງສົມເພື່ອເກີດໃນນະຣົກ
ກຳເນີດສັດເດຍຣັດສານ ອະສຸຣະກາຍ ແລະແດນເຜດ
ສ່ວນຊົນທັງຫຼາຍຜູ້ໝັ່ນອົບຣົມຕົນໃນສາສະນະທຳ
ຂອງພຣະສຳມາສຳພຸດທະເຈົ້າ ທັງກາງເວັນແລະກາງຄືນ
ໝັ່ນຈະເລີນອະສຸພະສັນຍາເປັນປະຈຳ
ຍ່ອມເຮັດໄຟຄືຣາຄະໃຫ້ດັບລົງໄດ້
ຊົນທັງຫຼາຍທີ່ມີຄຸນນະທຳສູງ
ຍ່ອມດັບໄຟຄືໂທສະລົງໄດ້ດ້ວຍເມດຕາ
ແລະຍ່ອມດັບໄຟຄືໂມຫະດ້ວຍປັນຍາ
ອັນເປັນເຄື່ອງທຳລາຍກິເລດໄດ້ເດັດຂາດ
ຊົນຜູ້ມີປັນຍາຮັກສາຕົນເຫຼົ່ານັ້ນ
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ດັບໄຟທັງ ໓ ກອງນັ້ນໄດ້ແລ້ວ
ຊື່ວ່າດັບກິເລດໄດ້ໝົດສິ້ນ ລ່ວງພົ້ນທຸກໄດ້ທັງໝົດ
ບັນດິດທັງຫຼາຍຜູ້ເຫັນແຈ້ງອະຣິຍະສັດ
ຈົບເວດ ຮູ້ສິ່ງທັງປວງໂດຍຖືກຕ້ອງ
ຍ່ອມບໍ່ກັບມາວຽນວ່າຍຕາຍເກີດອີກ

ຍ້ອນຮູ້ຍິ່ງເຖິງພາວະທີ່ສິ້ນສຸດການເກີດ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ອັກຄິສູດທີ ໔ ຈົບ**

## ໕. ອຸບປະຣິກຂະສູດ
## ວ່າດ້ວຍການພິຈາລະນາໂດຍວິທີທີ່ຈິດບໍ່ຟຸ້ງຊ່ານ

[໙໔] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ພິກຂຸຄວນພິຈາລະນາໂດຍປະການທີ່ວິນຍານ (ຈິດ)ຂອງຕົນບໍ່ຟຸ້ງຊ່ານ ບໍ່ຊັດສ່າຍໄປໃນອາລົມພາຍນອກ ບໍ່ຕິດຢູ່ພາຍໃນ ຈຶ່ງບໍ່ຕື່ນຕົກໃຈຍ້ອນບໍ່ຍຶດຕິດໃນອາລົມຕ່າງ ໆ

ພິກຂຸທັງຫຼາຍ ເມື່ອວິນຍານບໍ່ຟຸ້ງຊ່ານ ບໍ່ຊັດສ່າຍໄປໃນອາລົມພາຍນອກ ບໍ່ຕິດຢູ່ພາຍໃນ ເມື່ອພິກຂຸບໍ່ຕື່ນຕົກໃຈ ຍ້ອນບໍ່ຍຶດໝັ້ນອາລົມຕ່າງ ໆ ເຫດແຫ່ງທຸກຄືຊາດ ແລະຄວາມເກີດທຸກຄືຊະຣາແລະມໍລະນະ ກໍຈະເກີດມີບໍ່ໄດ້ອີກຕໍ່ໄປ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ພິກຂຸລະກິເລດເຄື່ອງຂ້ອງ ໆ ປະການ[๑] ໄດ້
ຕັດຕັນຫາທີ່ນຳໄປສູ່ພົບໄດ້ເດັດຂາດ
ມີສັງສານຄືຊາດໝົດສິ້ນແລ້ວ
ຍ່ອມບໍ່ມີພົບໃໝ່

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ອຸບປະຣິກຂະສູດທີ ໕ ຈົບ**

## ໖. ກາມູບປັດຕິສູດ
## ວ່າດ້ວຍຜູ້ຍັງເສບກາມບໍ່ສາມາດລ່ວງສັງສາຣະທຸກໄດ້

[໙໕] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ການເສບກາມ ໓ ປະການນີ້
ການເສບກາມ ໓ ປະການ ອັນໃດແດ່ ຄື

໑. ການເສບກາມຂອງສັດຜູ້ມີຄວາມຕ້ອງການຜາກົດຢູ່ປະຈໍາ[1]
໒. ການເສບກາມຂອງເທວະດາຜູ້ຍິນດີໃນການສົມບັດທີ່ຕົນເນຣະມິດ[2]
໓. ການເສບກາມຂອງເທວະດາຜູ້ຍິນດີໃນການສົມບັດທີ່ເທວະດາອື່ນເນຣະມິດໃຫ້[3]

ພິກຂຸທັງຫຼາຍ ການເສບກາມ ໓ ປະການນີ້ແລ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ສັດຜູ້ມີຄວາມຕ້ອງການຜາກົດຢູ່ປະຈໍາ
ເທວະດາຜູ້ຍິນດີໃນການສົມບັດທີ່ຕົນເນຣະມິດ
ເທວະດາຜູ້ຍິນດີໃນການສົມບັດທີ່ເທວະດາອື່ນເນຣະມິດໃຫ້
ແລະສັດເຫຼົ່າອື່ນທີ່ເສບກາມຢູ່ປະຈໍາ
ຍ່ອມບໍ່ລ່ວງພົ້ນສັງສາຣະວັດທີ່ມີສະພາວະແບບນີ້ແລະສະພາວະແບບອື່ນ
ບັນດິດຮູ້ໂທດໃນການເສບກາມທັງຫຼາຍນີ້ແລ້ວ
ຄວນລະເວັ້ນກາມທັງທີ່ເປັນຂອງທິບແລະຂອງມະນຸດທັງໝົດ
ບັນດິດທັງຫຼາຍ ຕັດກະແສຕັນຫາທີ່ກໍາໜັດຍິນດີ
ໃນປິຍະຣູບສາຕະຣູບ[1]ທີ່ຄົນທົ່ວໄປລ່ວງພົ້ນໄດ້ຍາກຂາດໝົດແລ້ວ
ຊື່ວ່າດັບກິເລດໄດ້ໝົດສິ້ນ ລ່ວງພົ້ນທຸກໄດ້ທັງໝົດ
ບັນດິດທັງຫຼາຍຜູ້ເຫັນແຈ້ງອະຣິຍະສັດ
ຈົບເວດ ຮູ້ສິ່ງທັງປວງໂດຍຖືກຕ້ອງ
ຍ່ອມບໍ່ກັບມາວຽນວ່າຍຕາຍເກີດອີກ
ຍ້ອນຮູ້ຍິ່ງເຖິງພາວະສິ້ນສຸດການເກີດ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບບນີ້ແລ

**ກາມູບປັດຕິສູດທີ ໖ ຈົບ**

## ໗. ກາມໂຍຄະສູດ
## ວ່າດ້ວຍຜູ້ປະກອບດ້ວຍກາມໄປສູ່ວັດຕະສົງສານ

[໙໖] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບບນີ້

ພິກຂຸທັງຫຼາຍ ບຸກຄົນຜູ້ປະກອບຕົນດ້ວຍກາມໂຍຄະ[໑] ປະກອບຕົນດ້ວຍພະວະໂຍຄະ[໒] ຊື່ວ່າເປັນອະນາຄາມີ[໓] ຄືຍັງຕ້ອງກັບມາເກີດໃນກາມະພູມອີກ

ບຸກຄົນຜູ້ພາກຕົນອອກຈາກກາມໂຍຄະ ແຕ່ຍັງປະກອບຕົນດ້ວຍພະວະໂຍຄະ ຊື່ວ່າເປັນອະນາຄາມີ[໔]ຄືເປັນຜູ້ບໍ່ຕ້ອງກັບມາເກີດໃນກາມະພູມອີກ

ບຸກຄົນຜູ້ພາກຕົນອອກຈາກກາມໂຍຄະແລະພະວະໂຍຄະໄດ້ຂາດແລ້ວ ຊື່ວ່າເປັນອະຣະຫັນ ຄືເປັນຜູ້ສິ້ນອາສະວະກິເລດແລ້ວ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ສັດທັງຫຼາຍຜູ້ປະກອບຕົນ
ດ້ວຍກາມໂຍຄະແລະພະວະໂຍຄະທັງສອງ
ຊື່ວ່າຍັງຕ້ອງວຽນວ່າຍຕາຍເກີດຢູ່ໃນສັງສາຣະວັດ
ສ່ວນຜູ້ທີ່ລະກາມທັງຫຼາຍໄດ້ເດັດຂາດ
ແຕ່ຍັງບໍ່ເຖິງຄວາມສິ້ນອາສະວະ
ຍັງປະກອບຕົນດ້ວຍພະວະໂຍຄະ
ບັນດິດທັງຫຼາຍ ຮຽກວ່າ ເປັນອະນາຄາມີ
ແຕ່ຜູ້ທີ່ຕັດຄວາມສົງໄສໄດ້
ສິ້ນທັງມານະແລະພົບທີ່ຈະເກີດໃໝ່
ເຖິງຄວາມສິ້ນອາສະວະແລ້ວ
ເປັນຜູ້ຊື່ວ່າ ເຖິງຝັ່ງແລ້ວໃນໂລກ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ກາມະໂຍຄະສູດທີ ໗ ຈົບ**

## ໘. ກັນລະຍານະສີລະສູດ

### ວ່າດ້ວຍຜູ້ມີສີນງາມ ທຳງາມ ແລະປັນຍາງາມ

[໙໗] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ພິກຂຸຜູ້ມີສີນງາມ ມີທຳງາມ ແລະມີປັນຍາງາມ ເຮົາຈຶ່ງຮຽກວ່າ ເປັນພຣະອະຣະຫັນແທ້ຈິງ ຢູ່ຈົບພົມມະຈັນ ເປັນບຸຣຸດຜູ້ສູງສຸດ ໃນທຳວິໄນນີ້

ຜູ້ມີສີນງາມ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນຢູ່ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາໃນສິກຂາບົດທັງຫຼາຍ ພິກຂຸຊື່ວ່າເປັນຜູ້ມີສີນງາມແນວນີ້ແລ ເປັນຜູ້ມີສີນງາມ ດ້ວຍອາການດັ່ງກ່າວນີ້

ຜູ້ມີທຳງາມ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ເປັນຜູ້ໝັ່ນປະກອບຄວາມພຽນຕິດຕໍ່ກັນດ້ວຍການຈະເລີນໂພທິປັກຂິຍະທຳ ໓໗ ປະການຢູ່ສະເໝີ ພິກຂຸຊື່ວ່າ ເປັນຜູ້ມີທຳງາມແນວນີ້ແລ ເປັນຜູ້ມີສີນງາມ ມີທຳງາມດ້ວຍອາການດັ່ງກ່າວນີ້

ຜູ້ມີປັນຍາງາມ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ເຮັດໃຫ້ແຈ້ງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ພິກຂຸຊື່ວ່າ ເປັນຜູ້ມີປັນຍາງາມແນວນີ້ແລ

ພິກຂຸເປັນຜູ້ມີສີນງາມ ມີທຳງາມ ແລະມີປັນຍາງາມ ດ້ວຍອາການດັ່ງກ່າວນີ້ ເຮົາຈຶ່ງຮຽກວ່າ ເປັນພຣະອະຣະຫັນແທ້ຈິງ ຢູ່ຈົບພົມມະຈັນ ເປັນບຸຣຸດຜູ້ສູງສຸດ ໃນທຳວິໄນນີ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ພຣະສຳມາສຳພຸດທະເຈົ້າທຸກພຣະອົງ
ຕັດຮຽກພິກຂຸຜູ້ບໍ່ມີຄວາມຊົ່ວທາງກາຍ ວາຈາ ໃຈ
ມີຫິຣິຄອງໃຈນັ້ນວ່າ ເປັນຜູ້ມີສີນງາມ
ຕັດຮຽກພິກຂຸຜູ້ພ່ຳເພັງໂພທິປັກຂິຍະທຳ ໓໗ ປະການ
ມາແລ້ວເປັນຢ່າງດີ
ບໍ່ມີກິເລດເປັນເຄື່ອງຟູໃຈນັ້ນວ່າ ເປັນຜູ້ມີທຳງາມ
ຕັດຮຽກພິກຂຸຜູ້ຮູ້ແຈ້ງຄວາມສິ້ນທຸກຂອງຕົນໃນອັດຕະພາບນີ້ທີ່ນັ້ນ
ຜູ້ຫາອາສະວະບໍ່ໄດ້ນັ້ນວ່າ ເປັນຜູ້ມີປັນຍາງາມ
ຕັດຮຽກພິກຂຸຜູ້ສົມບູນດ້ວຍທຳມີສີນເປັນຕົ້ນນັ້ນ

ຜູ້ບໍ່ມີທຸກ ຕັດຄວາມສົງໄສໄດ້ແລ້ວ
ບໍ່ອາໄສໂລກທັງປວງ ລະກິເລດທຸກຢ່າງໃນໂລກໄດ້ໝົດສິ້ນ
(ວ່າເປັນຜູ້ມີປັນຍາງາມ)

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ກັນລະຍານະສີລະສູດທີ ໗ ຈົບ**

## ໘. ທານະສູດ

## ວ່າດ້ວຍການໃຫ້ທານ

[໙໘] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທານ ໒ ຢ່າງ ຄື ອາມິດສະທານ (ການໃຫ້ສິ່ງຂອງ)ແລະທຳມະທານ (ການໃຫ້ທຳ) ບັນດາທານ ໒ ຢ່າງນີ້ ທຳມະທານເປັນເລີດ

ການຈຳແນກ ໒ ຢ່າງ ຄື ການຈຳແນກດ້ວຍອາມິດ ແລະການຈຳແນກດ້ວຍທຳ ບັນດາການຈຳແນກ ໒ ຢ່າງນີ້ ການຈຳແນກດ້ວຍທຳເປັນເລີດ

ການອະນຸເຄາະ ໒ ຢ່າງ ຄື ການອະນຸເຄາະດ້ວຍອາມິດ ແລະການອະນຸເຄາະດ້ວຍທຳ ບັນດາການອະນຸເຄາະ ໒ ຢ່າງນີ້ ການອະນຸເຄາະດ້ວຍທຳເປັນເລີດ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ວິນຍູຊົນຜູ້ມີຈິດເຫຼື້ອມໃສໃນພຣະສຳມາສຳພຸດທະເຈົ້າ
ແລະພຣະອະຣິຍະສົງຜູ້ປະເສີດ ເປັນນາບຸນອັນເລີດຂອງໂລກ
ເມື່ອຮູ້ແຈ້ງທານແລະການຈຳແນກ
ທີ່ພຣະຜູ້ມີພຣະພາກເຈົ້າຕັດສັນເສີນວ່າ ປະເສີດຢ່າງຍິ່ງ
ໃຜນໍ ຈະບໍ່ຖວາຍທານໃນການອັນສົມຄວນ
ປະໂຫຍດອັນປະເສີດນັ້ນຍ່ອມສຳເລັດແກ່ຄົນ ໒ ຝ່າຍ ຄື
ຝ່າຍສະແດງທຳແລະຝ່າຍຟັງທຳ
ຜູ້ມີຈິດເຫຼື້ອມໃສໃນຄຳສອນຂອງພຣະສຸຄົດເຈົ້າ
ແລະຜູ້ບໍ່ຜະໝາດໃນຄຳສອນຂອງພຣະສຸຄົດເຈົ້າ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ທານະສູດທີ ໗ ຈົບ**

# ໑໐. ເຕວິດຊະສູດ[1]

## ວ່າດ້ວຍວິດຊາ ໓

[໗໗] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ເຮົາບັນຍັດຮຽກຜູ້ບັນລຸວິດຊາ ໓ ວ່າເປັນພາມ ໂດຍທຳ ເຮົາບໍ່ໄດ້ບັນຍັດຮຽກ ບຸກຄົນອື່ນວ່າ ເປັນພາມ ດ້ວຍເຫດພຽງການກ່າວອ້າງຕາມທີ່ຜູ້ອື່ນຮຽກກັນ

ກໍເຮົາບັນຍັດຮຽກຜູ້ບັນລຸວິດຊາ ໓ ວ່າເປັນພາມ ໂດຍທຳ ເຮົາບໍ່ໄດ້ບັນຍັດຮຽກບຸກຄົນອື່ນວ່າ ເປັນພາມ ດ້ວຍເຫດພຽງການກ່າວອ້າງຕາມທີ່ຜູ້ອື່ນຮຽກກັນ ມີອະທິບາຍແນວໃດ ຄື

໑. ພິກຂຸໃນທຳວິໄນນີ້ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບຫຼວງຫຼາຍແດ່ ຕະຫຼອດວິວັດຕະກັບ[2] ຫຼວງຫຼາຍແດ່ ຕະຫຼອດສັງວັດຕະແລະວິວັດຕະກັບຫຼວງຫຼາຍແດ່ວ່າ ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກແລະອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດ ໃນພົບນີ້ ພິກຂຸນັ້ນ ຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້ ທ່ານຊື່ວ່າໄດ້ບັນລຸວິດຊາທີ ໑ ນີ້ແລ້ວ ຄວາມມືດມິດຄືອະວິດຊາ ທ່ານກຳຈັດໄດ້ແລ້ວ ແສງສະຫວ່າງ[1]ຄືວິດຊາໄດ້ເກີດຂຶ້ນແກ່ທ່ານ ປຽບຄື ແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນອຸທິດກາຍແລະໃຈ

໒. ພິກຂຸໃນທຳວິໄນນີ້ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງໝູ່ສັດຜູ້ເປັນໄປຕາມກຳວ່າ ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ

ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງໝູ່ສັດຜູ້ເປັນໄປຕາມກຳແນວນີ້ ທ່ານຊື່ວ່າໄດ້ບັນລຸວິດຊາທີ ໒ ນີ້ແລ້ວ[໒] ຄວາມມືດມິດຄືອະວິດຊາ ທ່ານກຳຈັດໄດ້ແລ້ວ ແສງສະຫວ່າງຄືວິດຊາໄດ້ເກີດຂຶ້ນແກ່ທ່ານ ປຽບຄືແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ຜະ ໝາດ ມີຄວາມພຽນອຸທິດກາຍແລະໃຈ

໓. ພິກຂຸໃນທຳວິໄນນີ້ເຮັດໃຫ້ແຈ້ງເຊິ່ງເຈໂຕວິມຸດຕິ ແລະປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ທ່ານຊື່ວ່າໄດ້ບັນລຸວິດຊາທີ ໓ ນີ້ແລ້ວ[໓] ຄວາມມືດມິດຄືອະວິດຊາທ່ານກຳຈັດໄດ້ແລ້ວ ແສງສະຫວ່າງຄືວິດຊາໄດ້ເກີດຂຶ້ນແກ່ທ່ານ ປຽບຄືແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນອຸທິດກາຍແລະໃຈ

ພິກຂຸທັງຫຼາຍ ເຮົາບັນຍັດຮຽກຜູ້ບັນລຸວິດຊາ ໓ ວ່າເປັນພາມ ໂດຍທຳ ເຮົາບໍ່ໄດ້ບັນຍັດຮຽກ ບຸກຄົນອື່ນວ່າ ເປັນພາມ ດ້ວຍເຫດພຽງການກ່າວອ້າງຕາມທີ່ຜູ້ອື່ນຮຽກກັນ ແນວນີ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ບຸກຄົນໃດຮູ້ປຸບເພນິວາສະຍານ ເຫັນທັງສະຫວັນແລະອະບາຍ
ບັນລຸທຳທີ່ສິ້ນຄວາມເກີດ
ເປັນມຸນີ ຢູ່ຈົບພົມມະຈັນຍ້ອນຮູ້ຍິ່ງ
ເປັນພາມຜູ້ໄດ້ວິດຊາ ໓ ໂດຍວິດຊາ ໓ ນີ້
ເຮົາຮຽກບຸກຄົນນັ້ນວ່າ ໄດ້ວິດຊາ ໓
ບໍ່ໄດ້ຮຽກບຸກຄົນອື່ນວ່າ ໄດ້ວິດຊາ ໓ ຕາມທີ່ຜູ້ອື່ນຮຽກກັນແຕ່ຢ່າງໃດ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ເຕວິດຊະສູດທີ ໑໐ ຈົບ**

**ປັນຈະມະວັກ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື



**ຕິກະນິບາດ ຈົບ**

# ๔. จะตุกกะนิบาด

## ๑. พามมะนะทำมะยาคะสูด

### ว่าด้วยการบูชายันด้วยทำของผู้เป็นพาม

[๑๐๐] แท้จิง พระสูดนี้ พระผู้มีพระพากเจ้าตัดไว้แล้ว พระสูดนี้ พระอะระหันกล่าวไว้แล้ว ข้าพะเจ้าได้ฟังมาแนวนี้

พิกขุทังหลาย เฮานี้แลเป็นพามผู้ควนแก่การขํ ขินขวายในทำมะทานตะหลอดเวลา ชิงไว้เชิ่งอัดตะพาบสุดท้าย เป็นสันละยะแพด ปาดกิเลดผู้ซ่งวชาน ท่านทังหลายเป็นบุด ผู้เนื่องในเอิกของเฮา คือ เกิดแต่ปาก เกิดแต่ทำ ทำส้างสันไว้ จิ่งเป็นทำทายาดเทิ้น ย่าเป็นอามิดทายาดเลีย

พิกขุทังหลาย ทาน ๒ ย่างนี้ คือ (๑) อามิดสะทาน (๒) ทำมะทาน บันดาทาน ๒ ย่างนี้ ทำมะทานเป็นเลิด

การจำแนก ๒ ย่างนี้ คือ (๑) การจำแนกอามิด (๒) การจำแนกทำ บันดาการจำแนก ๒ ย่างนี้ การจำแนกทำเป็นเลิด

การอะนุเคาะ ๒ ย่างนี้ คือ (๑) การอะนุเคาะด้วยอามิด (๒) การอะนุเคาะด้วยทำ บันดาการอะนุเคาะ ๒ ย่างนี้ การอะนุเคาะด้วยทำเป็นเลิด

การบูชายัน ๒ ย่างนี้ คือ (๑) การบูชายันด้วยอามิด (๒) การบูชายันด้วยทำ บันดาการบูชายัน ๒ ย่างนี้ การบูชายันด้วยทำเป็นเลิด

พระผู้มีพระพากเจ้า ได้ตัดเนื้อความดั่งกล่าวมานี้แล้ว ในพระสูดนั้น จิ่งตัดคาถาปะพันดั่งนี้ว่า

สัดทังหลายย่อมนอบน้อมตะถาคิด
ผู้บูชาด้วยทำ บ่มีความขี้ถี่
อะนุเคาะสับพะสัดสะเหมี
เป็นผู้ปะเสิดที่สุดในหมู่เทวะดาและมะนุด
ผู้เถิงฝั่งแห่งพົບ เซั่นนั้น

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ພາມມະນະທຳມະຍາຄະສູດທີ ໑ ຈົບ**

## ໘. ສຸລະພະສູດ[๑]

## ວ່າດ້ວຍປັດໄຈທີ່ຫາໄດ້ງ່າຍ

[໑໐໑] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນ ກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ປັດໄຈ ໔ ຢ່າງນີ້ ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ
ປັດໄຈ ໔ ຢ່າງ ອັນໃດແດ່ ຄື

໑. ບັນດາຈີວອນ ບັງສຸກຸນຈີວອນ (ຜ້າທີ່ໄດ້ມາຈາກກອງຝຸ່ນ) ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ

໒. ບັນດາໂພຊະນະ ປິນະຖິຍາໂລປະໂພຊະນະ (ໂພຊະນະຄືຄຳເຂົ້າທີ່ໄດ້ມາດ້ວຍກຳລັງ ລຳແຂ່ງ) ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ

໓. ບັນດາເສນາສະນະ ຣຸກຂະມູນເສນາສະນະ (ເສນາສະນະຄືເຫງົ້າໄມ້) ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ

໔. ບັນດາຢາປິ່ນປົວພະຍາດ ປູຕິມຸດຕະເພສັດ (ຢາດອງນ້ຳມູດເນົ່າ) ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ

ປັດໄຈ ໔ ຢ່າງນີ້ແລ ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ

ພິກຂຸທັງຫຼາຍ ຍ້ອນພິກຂຸເປັນຜູ້ສັນໂດດດ້ວຍປັດໄຈ ໔ ທີ່ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດນີ້ ເຮົາຈຶ່ງກ່າວວ່າ ເປັນອົງປະກອບແຫ່ງຄຸນເຄື່ອງຄວາມເປັນສະມະນະ[๑] ແນວໜຶ່ງຂອງພິກຂຸນີ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ຈິດຂອງພິກຂຸຜູ້ສັນໂດດດ້ວຍປັດໄຈ
ທີ່ມີຄ່າໜ້ອຍ ຫາໄດ້ງ່າຍ ແລະບໍ່ມີໂທດ
ຍ່ອມບໍ່ມີຄວາມຄັບແຄ້ນ ບໍ່ຕິດຂັດທົ່ວທິດ

ຍ້ອນຜາຣົບຈີວອນ ໂພຊະນະ ເສນາສະນະ (ແລະຢາປິ່ນປົວພະຍາດ)
ແລະທຳທີ່ເໝາະແກ່ຄວາມເປັນສະມະນະທີ່ພິກຂຸນັ້ນກ່າວແລ້ວ
ອັນພິກຂຸຜູ້ສັນໂດດ ບໍ່ຜະໝາດ ບັນລຸແລ້ວ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ສຸລະພະສູດທີ ໘ ຈົບ**

## ໙. ອາສະວັກຂະຍະສູດ

## ວ່າດ້ວຍຄວາມສິ້ນອາສະວະ

[໑໐໘] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ເຮົາກ່າວເຖິງຄວາມສິ້ນອາສະວະທັງຫຼາຍສຳລັບພິກຂຸຜູ້ຮູ້ຢູ່ ຜູ້ເຫັນຢູ່ ບໍ່ໄດ້ກ່າວເຖິງຄວາມສິ້ນອາສະວະທັງຫຼາຍສຳລັບພິກຂຸຜູ້ບໍ່ຮູ້ຢູ່ ບໍ່ເຫັນຢູ່ແຕ່ຢ່າງໃດ

ພິກຂຸຮູ້ອັນໃດ ເຫັນອັນໃດ ຈຶ່ງຊື່ວ່າມີຄວາມສິ້ນອາສະວະທັງຫຼາຍ
ຄື ພິກຂຸຮູ້ຢູ່ ເຫັນຢູ່ວ່າ ນີ້ທຸກ ຈຶ່ງຊື່ວ່າ ມີຄວາມສິ້ນອາສະວະທັງຫຼາຍ

ພິກຂຸຮູ້ຢູ່ ເຫັນຢູ່ວ່າ ນີ້ທຸກຂະສະມຸໄທ (ເຫດເກີດທຸກ) ຈຶ່ງຊື່ວ່າ ມີຄວາມສິ້ນອາສະວະທັງຫຼາຍ

ພິກຂຸຮູ້ຢູ່ ເຫັນຢູ່ວ່າ ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ຈຶ່ງຊື່ວ່າ ມີຄວາມສິ້ນອາສະວະທັງຫຼາຍ

ພິກຂຸຮູ້ຢູ່ ເຫັນຢູ່ວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ) ຈຶ່ງຊື່ວ່າ ມີຄວາມສິ້ນອາສະວະທັງຫຼາຍ

ພິກຂຸທັງຫຼາຍ ພິກຂຸຮູ້ຢູ່ແນວນີ້ ເຫັນຢູ່ແນວນີ້ແລ ຈຶ່ງຊື່ວ່າມີຄວາມສິ້ນອາສະວະທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ຍານໃນຄວາມສິ້ນກິເລດຍ່ອມເກີດຂຶ້ນແກ່ພຣະເສຂະ
ຜູ້ກຳລັງສຶກສາແລະປະຕິບັດຕາມທາງສາຍກົງກ່ອນ
ລຳດັບຕໍ່ຈາກນັ້ນອັນຍິນຊີຈຶ່ງເກີດຂຶ້ນ[໑]
ຕໍ່ຈາກອັນຍິນຊີນັ້ນ ວິມຸດຕິຍານອັນສູງສຸດ

ແລະຍານໃນຄວາມສິ້ນກິເລດ
ຍ່ອມເກີດຂຶ້ນແກ່ທ່ານຜູ້ລຸດພົ້ນດ້ວຍອະຣະຫັດຕະຜົນ
ສັງໂຍດທັງຫຼາຍສິ້ນໄປແລ້ວ
ຄົນພານຜູ້ຂີ້ຄ້ານ ບໍ່ຮູ້ແຈ້ງ ບໍ່ຄວນບັນລຸນິບພານ
ເປັນທີ່ປົດເປື້ອງກິເລດເຄື່ອງຮ້ອຍຮັດທັງປວງນີ້ເລີຍ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ອາສະວັກຂະຍະສູດທີ ໗ ຈົບ**

## ໘. ສະມະນະພາມມະນະສູດ

## ວ່າດ້ວຍສະມະນະຫຼືພາມ

[໑໐໗] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ສະມະນະຫຼືພາມເຫຼົ່ານັ້ນ ເຮົາບໍ່ໄດ້ຍ້ອງຍໍວ່າ ເປັນສະມະນະໃນໝູ່ສະມະນະແຕ່ຢ່າງໃດ ບໍ່ໄດ້ຍ້ອງຍໍວ່າເປັນພາມໃນໝູ່ພາມແຕ່ຢ່າງໃດ ຍ້ອນວ່າສະມະນະຫຼືພາມເຫຼົ່ານັ້ນ ບໍ່ໄດ້ເຮັດໃຫ້ແຈ້ງຜົນຄື ຄວາມເປັນສະມະນະ ແລະຜົນຄືຄວາມເປັນພາມດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ສະມະນະຫຼືພາມເຫຼົ່ານັ້ນແລ ເຮົາຍ້ອງຍໍວ່າ ເປັນສະມະນະໃນໝູ່ສະມະນະ ຍ້ອງຍໍວ່າເປັນພາມໃນໝູ່ພາມ ຍ້ອນວ່າສະມະນະຫຼືພາມເຫຼົ່ານັ້ນໄດ້ເຮັດໃຫ້ແຈ້ງຜົນຄືຄວາມເປັນສະມະນະ ແລະຜົນຄືຄວາມເປັນພາມດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນນັ້ນແລ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ສະມະນະຫຼືພາມເຫຼົ່າໃດບໍ່ຮູ້ຈັກທຸກ
ເຫດເກີດທຸກ ທໍາມະຊາດເປັນທີ່ດັບທຸກລົງໄດ້ໝົດສິ້ນ
ແລະບໍ່ຮູ້ຈັກທາງປະຕິບັດໃຫ້ເຖິງຄວາມດັບທຸກ

ສະມະນະຫຼືພາມເຫຼົ່ານັ້ນ
ເປັນຜູ້ເສື່ອມຈາກເຈໂຕວິມຸດຕິແລະປັນຍາວິມຸດຕິ
ເປັນຜູ້ບໍ່ຄວນເພື່ອຈະເຮັດບ່ອນສຸດແຫ່ງທຸກໄດ້
ເປັນຜູ້ເຂົ້າເຖິງຊາດແລະຊະຣາແທ້
ສ່ວນສະມະນະຫຼືພາມເຫຼົ່າໃດຮູ້ຈັກທຸກ
ເຫດເກີດທຸກ ທຳມະຊາດເປັນທີ່ດັບທຸກລົງໄດ້ໝົດສິ້ນ
ແລະຮູ້ຈັກທາງປະຕິບັດໃຫ້ເຖິງຄວາມດັບທຸກ
ສະມະນະຫຼືພາມເຫຼົ່ານັ້ນ
ເປັນຜູ້ເຖິງພ້ອມດ້ວຍເຈໂຕວິມຸດຕິແລະປັນຍາວິມຸດຕິ
ເປັນຜູ້ຄວນເພື່ອຈະເຮັດບ່ອນສຸດທຸກໄດ້
ແລະເປັນຜູ້ບໍ່ເຂົ້າເຖິງຊາດແລະຊະຣາ໑

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ສະມະນະພາມມະນະສູດທີ ໔ ຈົບ**

## ໕. ສີລະສຳປັນນະສູດ

## ວ່າດ້ວຍພິກຂຸຜູ້ສົມບູນດ້ວຍສີນ

[໑໐໔] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ພິກຂຸເຫຼົ່າໃດສົມບູນດ້ວຍສີນ ສົມບູນດ້ວຍສະມາທິ ສົມບູນ ດ້ວຍປັນຍາ ສົມບູນດ້ວຍວິມຸດຕິ ສົມບູນດ້ວຍວິມຸດຕິຍານທັດສະນະ ເປັນຜູ້ກ່າວສອນ ໃຫ້ຮູ້ແຈ້ງ ຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສ ເປັນຜູ້ສາມາດກ່າວບັນລະຍາຍສັດທຳໃຫ້ເຂົ້າໃຈງ່າຍ

ການໄດ້ເຫັນພິກຂຸເຫຼົ່ານັ້ນ ເຮົາກ່າວວ່າມີອຸປະກາຣະຫຼາຍ ການໄດ້ຟັງ (ທຳ)ພິກຂຸເຫຼົ່ານັ້ນ ເຮົາກ່າວວ່າມີອຸປະກາຣະຫຼາຍ ການໄດ້ເຂົ້າໄປຫາພິກຂຸເຫຼົ່ານັ້ນ ເຮົາກ່າວວ່າ ມີອຸປະກາຣະຫຼາຍ ການໄດ້ເຂົ້າໄປນັ່ງໃກ້ພິກຂຸເຫຼົ່ານັ້ນ ເຮົາກ່າວວ່າມີອຸປະກາຣະຫຼາຍ ການໄດ້ຣະນຶກເຖິງພິກຂຸເຫຼົ່ານັ້ນ ເຮົາກ່າວວ່າມີອຸປະກາຣະຫຼາຍ ແລະການໄດ້ອອກບວດນຳພິກຂຸເຫຼົ່ານັ້ນ ເຮົາກ່າວວ່າມີອຸປະກາຣະຫຼາຍນັ້ນເປັນຍ້ອນເຫດໃດ ພິກຂຸທັງຫຼາຍ ຍ້ອນເມື່ອພິກຂຸເສບ ຄົບ ເຂົ້າໄປນັ່ງ

ໃກ້[๑]ພິກຂຸຜູ້ຊົງຄຸນດັ່ງກ່າວນັ້ນ ສີນຂັນ ສະມາທິຂັນ ປັນຍາຂັນ ວິມຸດຕິຂັນ ວິມຸດຕິຍານທັດສະນະຂັນ ແມ່ນທີ່ຍັງບໍ່ບໍລິບູນກໍຈະເຖິງຄວາມບໍລິບູນດ້ວຍພາວະນາ

ພິກຂຸທັງຫຼາຍ ພິກຂຸຜູ້ຊົງຄຸນປານນີ້ນັ້ນ ເຮົາຮຽກວ່າ ສາດສະດາ ແດ່ ສັດຖະວາຫະ (ຜູ້ນຳໝູ່ຄະນະ) ແດ່ ຣະນັນຊະຫະ (ຜູ້ລະຂ້າເສິກຄືກິເລດ) ແດ່ ຕະໂມນຸທະ (ຜູ້ບັນເທົາຄວາມມືດ) ແດ່ ອາໂລກະກະຣະ (ຜູ້ເຮັດແສງສະຫວ່າງ) ແດ່ ໂອພາສະກະຣະ (ຜູ້ເຮັດໂອພາດ) ແດ່ ປັດໂຊຕະກະຣະ (ຜູ້ທຳຄວາມຮຸ່ງເຮືອງ) ແດ່ ປະພັງກະຣະ (ຜູ້ເຮັດຣັດສະໝີ) ແດ່ ອຸກກາຣະທາຣະ (ຜູ້ຊົງປະທີບຄືປັນຍາ) ແດ່ ອະຣິຍະ (ພຣະອະຣິຍະ) ແດ່ ຈັກຂຸມັນຕະ (ຜູ້ມີປັນຍາຈັກຂຸ) ແດ່

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ການໄດ້ເຫັນພຣະອະຣິຍະທັງຫຼາຍຜູ້ອົບຮົມຕົນດີແລ້ວ
ດຳລົງຊີວິດໂດຍທຳສະເໝີ
ຍ່ອມເປັນເຫດໃຫ້ເກີດປາໂມດແກ່ບັນດິດຜູ້ຮູ້ແຈ້ງ
ພຣະອະຣິຍະທັງຫຼາຍຜູ້ເຮັດຣັດສະໝີ ເຮັດແສງສະຫວ່າງ
ເປັນນັກປາດ ມີປັນຍາຈັກຂຸ ລະຂ້າເສິກຄືກິເລດ
ປະກາດສັດທຳ ເຮັດສັດໂລກໃຫ້ເກີດປັນຍາສະຫວ່າງສະໄຫວ
ເຊິ່ງຫາກບັນດິດໄດ້ຟັງຄຳສອນແລ້ວ ຮູ້ສິ່ງທັງປວງໂດຍຖືກຕ້ອງ
ຍ່ອມບໍ່ກັບມາເກີດອີກແນ່ນອນ
ຍ້ອນຮູ້ຍິ່ງພາວະທີ່ສິ້ນສຸດການເກີດ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ສີລະສຳປັນນະສູດທີ ៥ ຈົບ**

## ៦. ຕັນຫຸບປາທະສູດ[๒]

## ວ່າດ້ວຍທີ່ເກີດຕັນຫາ

[໑໐៥] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ຕັນຫາເມື່ອເກີດຂຶ້ນແກ່ພິກຂຸ ຍ່ອມເກີດຂຶ້ນໃນບ່ອນເກີດຕັນຫາ ໔ ຢ່າງນີ້ ທີ່ເກີດຕັນຫາ ໔ ຢ່າງ ອັນໃດແດ່ ຄື

໑. ຕັນຫາເມື່ອເກີດຂຶ້ນ ຍ່ອມເກີດຂຶ້ນຍ້ອນຈີວອນເປັນເຫດ
໒. ຕັນຫາເມື່ອເກີດຂຶ້ນ ຍ່ອມເກີດຂຶ້ນຍ້ອນບິນທະບາດເປັນເຫດ
໓. ຕັນຫາເມື່ອເກີດຂຶ້ນ ຍ່ອມເກີດຂຶ້ນຍ້ອນເສນາສະນະເປັນເຫດ
໔. ຕັນຫາເມື່ອເກີດຂຶ້ນ ຍ່ອມເກີດຂຶ້ນຍ້ອນສົມບັດແລະວິບັດເປັນເຫດ

ພິກຂຸທັງຫຼາຍ ຕັນຫາເມື່ອເກີດຂຶ້ນແກ່ພິກຂຸ ຍ່ອມເກີດຂຶ້ນໃນບ່ອນເກີດຕັນຫາ ໔ ຢ່າງນີ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ບຸກຄົນຜູ້ມີຕັນຫາເປັນເພື່ອນ ທ່ອງທ່ຽວໄປຕະຫຼອດການຍາວນານ
ຍ່ອມບໍ່ລ່ວງພົ້ນສັງສາຣະວັດທີ່ມີສະພາວະແນວນີ້ແລະສະພາວະແນວອື່ນ
ພິກຂຸຮູ້ໂທດນີ້ ຮູ້ຕັນຫາອັນເປັນເຫດໃຫ້ເກີດທຸກ
ເພິ່ງເປັນຜູ້ບໍ່ມີຕັນຫາ ບໍ່ມີຄວາມຖືໝັ້ນ ມີສະຕິສຳປະຊັນຍະຢູ່

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ຕັນຫຸບປາທະສູດທີ ໖ ຈົບ**

## ໗. ສະພົມມະກະສູດ[๑]
## ວ່າດ້ວຍມານດາບິດາເປັນພົມຂອງບຸດ

[໑໐໖] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ບຸດຂອງສະກຸນໃດບູຊາມານດາບິດາພາຍໃນເຮືອນຕົນ ສະກຸນນັ້ນຊື່ວ່າມີພົມ ບຸດຂອງສະກຸນໃດບູຊາມານດາບິດາພາຍໃນເຮືອນຕົນ ສະກຸນນັ້ນຊື່ວ່າມີບຸຣະພະເທບ ບຸດຂອງສະກຸນໃດບູຊາມານດາບິດາພາຍໃນເຮືອນຕົນ ສະກຸນນັ້ນຊື່ວ່າມີບຸຣະພາຈານ ບຸດຂອງ ສະກຸນໃດບູຊາມານດາບິດາພາຍໃນເຮືອນຕົນ ສະກຸນນັ້ນຊື່ວ່າມີອາຫຸໄນຍະບຸກຄົນ

ພິກຂຸທັງຫຼາຍ ຄຳວ່າ ພົມ ນີ້ເປັນຊື່ຂອງມານດາບິດາ ຄຳວ່າ ບຸຣະພະເທບນີ້ເປັນຊື່ຂອງມານດາບິດາ ຄຳວ່າ ບຸຣະພາຈານ ນີ້ເປັນຊື່ຂອງມານດາບິດາ ຄຳວ່າ ອາຫຸໄນຍະບຸກຄົນ ນີ້ເປັນຊື່ຂອງມານດາບິດາ[๒] ຂໍ້ນັ້ນຍ້ອນເຫດໃດ ຍ້ອນມານດາບິດາເປັນຜູ້ມີອຸປະກາຣະຫຼາຍ ບຳລຸງລ້ຽງ ສະແດງໂລກນີ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ມານດາບິດາຜູ້ອະນຸເຄາະປະຊາ
ທ່ານຮຽກວ່າພົມ ບຸຣະພະເທບ ບຸຣະພາຈານ
ແລະອາຫຸໄນຍະບຸກຄົນຂອງບຸດທັງຫຼາຍ
ຍ້ອນເຫດນັ້ນແລ ບັນດິດເພິ່ງນະມັດສະການ
ແລະສັກກາຣະມານດາບິດານັ້ນດ້ວຍເຂົ້າ ນໍ້າ ຜ້າ ບ່ອນນອນ
ການອົບກິ່ນ ການອາບນໍ້າ ແລະການລ້າງຕີນ
ຍ້ອນການປົນນິບັດມານດາບິດານັ້ນ
ບັນດິດຈຶ່ງສັນເສີນເຂົາໃນໂລກນີ້ເອງ
ເຂົາຕາຍໄປແລ້ວຍ່ອມບັນເທີງໃນສະຫວັນ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ສະພົມມະກະສູດທີ ໆ ຈົບ**

## ๘. ພະຫຸກາຣະສູດ

## ວ່າດ້ວຍຜູ້ມີອຸປະກາຣະຫຼາຍ

[໑໐໗] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ພາມແລະຄະຫະບໍດີທັງຫຼາຍຜູ້ບໍາລຸງອຸບປະຖໍາທ່ານທັງຫຼາຍດ້ວຍ ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຊື່ວ່າເປັນຜູ້ມີອຸປະກາຣະຫຼາຍແກ່ທ່ານທັງຫຼາຍ

ຂໍ້ທີ່ທ່ານທັງຫຼາຍ ສະແດງທໍາມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ພ້ອມທັງອັດຖະແລະພະຍັນຊະນະ ປະກາດພົມມະຈັນ ບໍລິສຸດ ບໍລິບູນຄົບຖ້ວນແກ່ພາມແລະຄະຫະບໍດີເຫຼົ່ານັ້ນ ຊື່ວ່າທ່ານທັງຫຼາຍກໍມີອຸປະກາຣະຫຼາຍແກ່ພາມແລະຄະຫະບໍດີທັງຫຼາຍ

ພິກຂຸທັງຫຼາຍ ຄະລືຫັດແລະບັນພະຊິດຕ່າງເພິ່ງພາອາໄສກັນແລະກັນຢູ່ ປະພຶດພົມມະຈັນເພື່ອຕ້ອງການກໍາຈັດໂອຄະອອກໃຫ້ໄດ້ ເພື່ອເຮັດບ່ອນສຸດແຫ່ງທຸກໂດຍຖືກຕ້ອງ ດ້ວຍປະການ ດັ່ງກ່າວນີ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ຄະລຶຫັດຜູ້ຢູ່ຄອງເຮືອນແລະບັນພະຊິດຜູ້ບໍ່ຢູ່ຄອງເຮືອນ
ທັງ ໘ ຝ່າຍ ຕ່າງອາໄສກັນແລະກັນ
ຈຶ່ງບັນລຸສັດທຳອັນເປັນແດນກະເສມຈາກໂຍຄະອັນປະເສີດໄດ້
ຝ່າຍບັນພະຊິດຜູ້ບໍ່ຢູ່ຄອງເຮືອນຍ່ອມຕ້ອງການປັດໄຈ ໔ ຄື
ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດ
ອັນເປັນເຄື່ອງບັນເທົາອັນຕະລາຍຈາກຝ່າຍຄະລຶຫັດ
ຝ່າຍຄະລຶຫັດຜູ້ຢູ່ຄອງເຮືອນ
ອາໄສພຣະອະຣິຍະຜູ້ປະຕິບັດດີແລ້ວ
ເຊື່ອໝັ້ນຄຳສັ່ງສອນແລະການປະຕິບັດດີຂອງພຣະອະຣະຫັນ
ເປັນຜູ້ເພ່ງພິນິດຢູ່ດ້ວຍອະຣິຍະປັນຍາ
ປະພຶດທຳອັນເປັນທາງນຳໄປສູ່ສຸກຄະຕິໂລກສະຫວັນໃນອັດຕະພາບນີ້
ມີຄວາມເພີດເພີນ ສະເຫວີຍກາມສຸກ ມ່ວນຊື່ນບັນເທີງໃຈຢູ່ໃນເທວະໂລກ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ພະທຸກາຣະສູດທີ ໗ ຈົບ**

## ໘. ກຸຫະສູດ[1]

## ວ່າດ້ວຍພິກຂຸຜູ້ຫຼອກລວງ

[໑໐໗] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ພິກຂຸເຫຼົ່າໃດຫຼອກລວງ ກະດ້າງ ເປັນຄົນປະຈົບ ມັກວາງທ່າ ອວດດີ ແລະມີຈິດບໍ່ຕັ້ງໝັ້ນ ພິກຂຸເຫຼົ່ານັ້ນຊື່ວ່າບໍ່ແມ່ນຜູ້ນັບຖືເຮົາ ຢູ່ຫ່າງໄກຈາກທຳວິໄນນີ້ ແລະຍ່ອມບໍ່ເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້

ສ່ວນພິກຂຸເຫຼົ່າໃດບໍ່ຫຼອກລວງ ບໍ່ເປັນຄົນປະຈົບ ເປັນນັກປາດ ບໍ່ກະດ້າງ ແລະມີຈິດຕັ້ງໝັ້ນ ດີ ພິກຂຸເຫຼົ່ານັ້ນຊື່ວ່າຜູ້ນັບຖືເຮົາ ບໍ່ຫ່າງໄກຈາກທຳວິໄນນີ້ ແລະ ຍ່ອມເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ພວກພິກຂຸຜູ້ຫຼອກລວງ ກະດ້າງ ເປັນຄົນປະຈົບ
ມັກວາງທ່າ ອວດດີ ແລະມີຈິດບໍ່ຕັ້ງໝັ້ນ
ຍ່ອມບໍ່ງອກງາມໃນທຳທີ່ພຣະສຳມາສຳພຸດທະເຈົ້າຊົງສະແດງໄວ້
ສ່ວນພວກພິກຂຸຜູ້ບໍ່ຫຼອກລວງ ບໍ່ປະຈົບ
ເປັນນັກປາດ ບໍ່ກະດ້າງ ແລະມີຈິດຕັ້ງໝັ້ນດີ
ຍ່ອມງອກງາມໃນທຳທີ່ພຣະສຳມາສຳພຸດທະເຈົ້າຊົງສະແດງໄວ້

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບບນີ້ແລ

**ກຸຫະສູດທີ ៩ ຈົບ**

## ໑໐. ນະທີໂສຕະສູດ

## ວ່າດ້ວຍກິເລດປຽບດ້ວຍກະແສນ້ຳ

[໑໐៧] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບບນີ້

ພິກຂຸທັງຫຼາຍ ອຸປະມາວ່າ ຊາຍຄົນໜຶ່ງຖືກກະແສນ້ຳຄືປິຍະຣູບສາຕະຣູບພັດພາໄປຢູ່ ຄົນມີຕາດີຢືນຢູ່ເທິງຝັ່ງ ເຫັນຊາຍຄົນນັ້ນແລ້ວກ່າວແບບນີ້ວ່າ ທ້າວ ທ່ານຖືກກະແສນ້ຳຄືປິຍະຣູບສາຕະຣູບພັດໄປຢູ່ແລ້ວຈິງ ໆ ແຕ່ໃນກະແສນ້ຳນີ້ມີແມ່ນ້ຳເລິກພາຍໃຕ້ທີ່ມີຄື້ນ ມີນ້ຳວົນ ມີສັດຮ້າຍ ມີຜີເສື້ອນ້ຳເຊິ່ງທ່ານຈົມໄປເຖິງແລ້ວຕ້ອງເຖິງຄວາມຕາຍ ບໍ່ກໍໄດ້ຮັບຄວາມທຸກປາງຕາຍແນ່ນອນ ເມື່ອຊາຍຄົນນັ້ນໄດ້ຍິນສຽງຂອງຊາຍທີ່ຢູ່ເທິງຝັ່ງນັ້ນແລ້ວ ກໍພະຍາຍາມໃຊ້ທັງມືແລະຕີນລອຍທວນກະແສນ້ຳຂຶ້ນມາ

ພິກຂຸທັງຫຼາຍ ຕະຖາຄົດເຮັດຂໍ້ອຸປະມານີ້ໄວ້ເພື່ອໃຫ້ເຂົ້າໃຈຄວາມແຈ່ມແຈ້ງ ກໍໃນອຸປະມານີ້ ມີຄວາມໝາຍດັ່ງນີ້

ຄຳວ່າ ກະແສນ້ຳ ເປັນຊື່ຂອງຕັນຫາ
ຄຳວ່າ ປິຍະຣູບສາຕະຣູບ ເປັນຊື່ຂອງອາຍະຕະນະພາຍໃນ ໖
ຄຳວ່າ ແມ່ນ້ຳເລິກພາຍໃຕ້ ເປັນຊື່ຂອງໂອຣຳພາຄິຍະສັງໂຍດ ໕
ຄຳວ່າ ມີຄື້ນ ເປັນຊື່ຂອງຄວາມໂກດແລະຄວາມຄັບແຄ້ນໃຈ

ຄຳວ່າ ມີນ້ຳວົນ ເປັນຊື່ຂອງກາມມະຄຸນ ໕
ຄຳວ່າ ມີສັດຮ້າຍ ມີຜີເສື້ອນ້ຳ ເປັນຊື່ຂອງມາຕຸຄາມ
ຄຳວ່າ ທວນກະແສນ້ຳ ເປັນຊື່ຂອງເນກຂຳມະ
ຄຳວ່າ ພະຍາຍາມໃຊ້ທັງມືແລະຕີນລອຍທວນກະແສ ເປັນຊື່ການເລີ່ມເຮັດຄວາມພຽນ
ຄຳວ່າ ຄົນມີຕາດີຢືນຢູ່ເທິງຝັ່ງ ໝາຍເຖິງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ພິກຂຸເພິ່ງລະການທັງຫຼາຍໃຫ້ໄດ້
ແມ່ນຈະດ້ວຍຄວາມຍາກລຳບາກ
ເມື່ອປາຖະໜາຄວາມກະເສມຈາກໂຍຄະຕໍ່ໄປ
ຄວນເປັນຜູ້ມີສຳປະຊັນຍະ ມີຈິດລຸດພົ້ນຈາກກິເລດໄດ້
ໃນເວລາທີ່ບັນລຸມັກຜົນນັ້ນ ໆ ກໍຈະສຳຜັດວິມຸດຕິໄດ້
ພິກຂຸນັ້ນເປັນຜູ້ຈົບເວດ ຢູ່ຈົບພົມມະຈັນແລ້ວ
ເຖິງບ່ອນສຸດຂອງໂລກ[1] ເຮົາຮຽກວ່າ ເປັນຜູ້ເຖິງຝັ່ງແຫ່ງພົບ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ນະທີໂສຕະສູດທີ ໑໐ ຈົບ**

## ໑໑. ຈະຣະສູດ[2]

## ວ່າດ້ວຍອິລິຍາບົດຍ່າງ

[໑໑໐] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ຖ້າການວິຕົກ (ຄວາມນຶກໃນທາງການ) ພະຍາບາດວິຕົກ (ຄວາມນຶກໃນທາງພະຍາບາດ) ຫຼືວິຫິງສາວິຕົກ (ຄວາມນຶກໃນທາງບຽດບຽນ) ເກີດຂຶ້ນແກ່ພິກຂຸຜູ້ກຳລັງຍ່າງ ແລະພິກຂຸຮັບວິຕົກນັ້ນ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ສິ້ນສຸດ ບໍ່ໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງຍ່າງ ຜູ້ເປັນແນວນີ້ ບໍ່ມີຄວາມພຽນ ບໍ່ມີໂອດຕັບປະ ເຮົາຮຽກວ່າຜູ້ຂີ້ຄ້ານ ມີຄວາມພຽນຫຍ່ອນຍານຕໍ່ເນື່ອງຕະຫຼອດໄປ

ຖ້າການວິຕົກ ພະຍາບາດວິຕົກ ຫຼືວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງຍືນ ແລະພິກຂຸຮັບວິຕົກນັ້ນ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ສິ້ນສຸດ ບໍ່ໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງຍືນ ຜູ້ເປັນແບວນີ້ ບໍ່ມີຄວາມພຽນ ບໍ່ມີໂອດຕັບປະ ເຮົາຮຽກວ່າ ຜູ້ຂີ້ຄ້ານ ມີຄວາມພຽນຫຍ່ອນຍານຕໍ່ເນື່ອງຕະຫຼອດໄປ

ຖ້າການວິຕົກ ພະຍາບາດວິຕົກ ຫຼືວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງນັ່ງ ແລະພິກຂຸຮັບວິຕົກນັ້ນ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ສິ້ນສຸດ ບໍ່ໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງນັ່ງ ຜູ້ເປັນແບວນີ້ ບໍ່ມີຄວາມພຽນ ບໍ່ມີໂອດຕັບປະ ເຮົາຮຽກວ່າ ຜູ້ຂີ້ຄ້ານ ມີຄວາມພຽນຫຍ່ອນຍານຕໍ່ເນື່ອງຕະຫຼອດໄປ

ຖ້າການວິຕົກ ພະຍາບາດວິຕົກ ຫຼືວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງນອນ ຕື່ນຢູ່ ແລະພິກຂຸຮັບວິຕົກນັ້ນ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ສິ້ນສຸດ ບໍ່ໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງນອນ ຕື່ນຢູ່ ຜູ້ເປັນແບວນີ້ ບໍ່ມີຄວາມພຽນ ບໍ່ມີໂອດຕັບປະ ເຮົາຮຽກວ່າ ຜູ້ຂີ້ຄ້ານ ມີຄວາມພຽນຫຍ່ອນຍານຕໍ່ເນື່ອງຕະຫຼອດໄປ

ພິກຂຸທັງຫຼາຍ ຖ້າການວິຕົກ ພະຍາບາດວິຕົກ ຫຼືວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງຍ່າງ ແລະພິກຂຸບໍ່ຮັບວິຕົກນັ້ນ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງຍ່າງ ຜູ້ເປັນແບວນີ້ ມີຄວາມພຽນ ມີໂອດຕັບປະ ເຮົາຮຽກວ່າ ຜູ້ຜາຣົບຄວາມພຽນ ອຸທິດກາຍແລະໃຈຕໍ່ເນື່ອງຕະຫຼອດໄປ

ຖ້າການວິຕົກ ພະຍາບາດວິຕົກ ຫຼືວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງຍືນ ແລະພິກຂຸບໍ່ຮັບວິຕົກນັ້ນ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງຍືນ ຜູ້ເປັນແບວນີ້ ມີຄວາມພຽນ ມີໂອດຕັບປະ ເຮົາຮຽກວ່າ ຜູ້ຜາຣົບຄວາມພຽນ ອຸທິດກາຍ ແລະໃຈຕໍ່ເນື່ອງຕະຫຼອດໄປ

ຖ້າການວິຕົກ ພະຍາບາດວິຕົກ ຫຼືວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງນັ່ງ ແລະພິກຂຸບໍ່ຮັບວິຕົກນັ້ນ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນນັ່ງແລ້ວ ຜູ້ເປັນແບວນີ້ ມີຄວາມພຽນ ມີໂອດຕັບປະ ເຮົາຮຽກວ່າ ຜູ້ຜາຣົບຄວາມພຽນ ອຸທິດກາຍແລະໃຈຕໍ່ເນື່ອງຕະຫຼອດໄປ

ຖ້າການວິຕົກ ພະຍາບາດວິຕົກ ຫຼືວິຫິງສາວິຕົກເກີດຂຶ້ນແກ່ພິກຂຸຜູ້ກຳລັງນອນ ຕື່ນຢູ່ ແລະພິກຂຸບໍ່ຮັບວິຕົກນັ້ນ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ໃຫ້ເຖິງຄວາມບໍ່ມີ ພິກຂຸແມ່ນກຳລັງນອນ ຕື່ນຢູ່ ຜູ້ເປັນແບວນີ້ ມີຄວາມພຽນ ມີໂອດຕັບປະ ເຮົາຮຽກວ່າ ຜູ້ຜາຣົບຄວາມພຽນ ອຸທິດກາຍ ແລະໃຈຕໍ່ເນື່ອງຕະຫຼອດໄປ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ຖ້າພິກຂຸໃດຜູ້ກຳລັງຍ່າງ ຢືນ ນັ່ງ ຫຼືນອນ
ນຶກຄິດເຖິງອະກຸສົນວິຕົກທີ່ກ່ຽວເນື່ອງກັບການຄອງເຮືອນ
ພິກຂຸນັ້ນຊື່ວ່າເດີນທາງຜິດ
ໝົກມຸ້ນຢູ່ໃນອາລົມເປັນເຫດແຫ່ງຄວາມຫຼົງ
ພິກຂຸເຊັ່ນນັ້ນບໍ່ສາມາດບັນລຸສຳໂພທິຍານ[១]ອັນສູງສຸດໄດ້
ສ່ວນພິກຂຸໃດຜູ້ກຳລັງຍ່າງ ຢືນ ນັ່ງ ຫຼືນອນໃຫ້ວິຕົກສະງົບ
ຍິນດີໃນທຳເປັນທີ່ລະງັບວິຕົກ
ພິກຂຸນັ້ນສາມາດບັນລຸສຳໂພທິຍານອັນສູງສຸດໄດ້

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ຈະຣະສູດທີ ໑໑ ຈົບ**

# ໑໘. ສຳປັນນະສີລະສູດ[២]

## ວ່າດ້ວຍຜູ້ມີສີນສົມບູນ

[໑໑໑] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງເປັນຜູ້ມີສີນສົມບູນ ມີປາຕິໂມກສົມບູນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍເທີ້ນ

ເມື່ອທ່ານທັງຫຼາຍເປັນຜູ້ມີສີນສົມບູນ ມີປາຕິໂມກສົມບູນ ສັງລວມດ້ວຍການ ສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດເລັກໜ້ອຍສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ຈະມີກິດອັນໃດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກນໍ

ພິກຂຸທັງຫຼາຍ ຖ້າພິກຂຸຜູ້ກຳລັງຍ່າງຢູ່ ປາສະຈາກອະພິດຊາ (ເພ່ງເລັງຢາກໄດ້ຂອງເຂົາ) ພະຍາບາດ (ຄວາມຄິດຮ້າຍ) ຖີນະມິດທະ (ຄວາມທໍດທູ່ແລະງ່ວມເຫງົາ) ອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຮ້ອນໃຈ) ລະວິຈິກິດສາ (ຄວາມລັງເລສົງໄສ)ໄດ້ ຜາຣົບຄວາມພຽນບໍ່ທຍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ມີກາຍສະງົບ ບໍ່ກະສັບກະສ່າຍ ມີຈິດແນ່ວແນ່ ເປັນສະ

ມາທິ ພິກຂຸແມ່ນກຳລັງຍ່າງຢູ່ ຜູ້ເປັນແບບນີ້ ມີຄວາມພຽນ ມີໂອດຕັບປະ ເຮົາຮຽກວ່າ ຜູ້ຜາຣົບຄວາມພຽນ ອຸທິດກາຍແລະໃຈຕໍ່ເນື່ອງຕະຫຼອດໄປ

ຖ້າພິກຂຸຜູ້ກຳລັງຢືນປາສະຈາກອະພິດຊາ ພະຍາບາດ ຖີນະມິດທະ ອຸດທັດຈະກຸກກຸດຈະ ລະວິຈິກິດສາໄດ້ ຜາຣົບຄວາມພຽນ ບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ມີກາຍສະງົບ ບໍ່ກະສັບກະສ່າຍ ມີຈິດແນ່ວແນ່ເປັນສະມາທິ ພິກຂຸແມ່ນກຳລັງຢືນ ຜູ້ເປັນແບບນີ້ ມີຄວາມພຽນ ມີໂອດຕັບປະ ເຮົາຮຽກວ່າ ຜູ້ຜາຣົບຄວາມພຽນ ອຸທິດກາຍແລະໃຈຕໍ່ເນື່ອງ ຕະຫຼອດໄປ

ຖ້າພິກຂຸຜູ້ກຳລັງນັ່ງ ປາສະຈາກອະພິດຊາ ພະຍາບາດ ຖີນະມິດທະ ອຸດທັດຈະກຸກກຸດຈະ ລະວິຈິກິດສາໄດ້ ຜາຣົບຄວາມພຽນ ບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ມີກາຍສະງົບ ບໍ່ກະສັບກະສ່າຍ ມີຈິດແນ່ວແນ່ເປັນສະມາທິ ພິກຂຸແມ່ນກຳລັງນັ່ງ ຜູ້ເປັນແບບນີ້ ມີຄວາມພຽນ ມີໂອດຕັບປະ ເຮົາຮຽກວ່າ ຜູ້ຜາຣົບຄວາມພຽນ ອຸທິດກາຍແລະໃຈ ຕໍ່ເນື່ອງຕະຫຼອດໄປ

ຖ້າພິກຂຸຜູ້ກຳລັງນອນ ຕື່ນຢູ່ ປາສະຈາກອະພິດຊາ ພະຍາບາດ ຖີນະມິດທະ ອຸດທັດຈະ ກຸກກຸດຈະ ລະວິຈິກິດສາໄດ້ ຜາຣົບຄວາມພຽນ ບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ມີກາຍສະງົບ ບໍ່ກະສັບກະສ່າຍ ມີຈິດແນ່ວແນ່ເປັນສະມາທິ ພິກຂຸແມ່ນກຳລັງນອນ ຕື່ນຢູ່ ຜູ້ເປັນແບບນີ້ ມີຄວາມພຽນ ມີໂອດຕັບປະ ເຮົາຮຽກວ່າ ຜູ້ຜາຣົບຄວາມພຽນ ອຸທິດກາຍແລະໃຈຕໍ່ເນື່ອງຕະຫຼອດໄປ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວໃນພຣະສູດນັ້ນຈຶ່ງຕັດຄາຖາປະພັນດັ່ງນີ້ວ່າ

ພິກຂຸຄວນຍ່າງສັງລວມ ຢືນສັງລວມ ນັ່ງສັງລວມ ນອນສັງລວມ
ຄູ້ເຂົ້າສັງລວມ ຢຽດອອກສັງລວມ
ພິຈາລະນາຄວາມເກີດ ແລະຄວາມດັບແຫ່ງທຳຂັນ໑
ທົ່ວພູມອັນເປັນບ່ອນຢູ່ຂອງສັດທັງຊັ້ນເທິງ ຊັ້ນກາງ ຊັ້ນລຸ່ມ
ນັກປາດທັງຫຼາຍຮຽກພິກຂຸເຊັ່ນນັ້ນ ຜູ້ມີຄວາມພຽນ
ລະກິເລດຢູ່ແບບນີ້ ປະພຶດຕົນສະງົບ ບໍ່ຟຸ້ງຊ່ານ
ຜູ້ສຶກສາຂໍ້ປະຕິບັດທີ່ສົມຄວນແກ່ຄວາມສະງົບໃຈ໑
ມີສະຕິທຸກເມື່ອວ່າ ຜູ້ອຸທິດກາຍແລະໃຈຕໍ່ເນື່ອງ

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແບບນີ້ແລ

**ສຳປັນນະສີລະສູດທີ ໑໘ ຈົບ**

# ໑໓. ໂລກະສູດ[๘]

## ວ່າດ້ວຍໂລກ

[໑໑໘] ແທ້ຈິງ ພຣະສູດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ພຣະສູດນີ້ ພຣະອະຣະຫັນກ່າວໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ວ່າ

ພິກຂຸທັງຫຼາຍ ຕະຖາຄົດຕັດສະຮູ້ໂລກ[๙]ແລ້ວ ຕະຖາຄົດພາກຈາກໂລກ ຕະຖາຄົດຕັດສະຮູ້ເຫດເກີດແຫ່ງໂລກ ຕະຖາຄົດລະເຫດເກີດແຫ່ງໂລກແລ້ວ ຕະຖາຄົດຕັດສະຮູ້ຄວາມດັບແຫ່ງໂລກ ຕະຖາຄົດເຮັດໃຫ້ແຈ້ງຄວາມດັບແຫ່ງໂລກ ຕະຖາຄົດຕັດສະຮູ້ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງໂລກ ຕະຖາຄົດພ່ຳເພັງຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງໂລກແລ້ວ

ຍ້ອນຕະຖາຄົດຕັດສະຮູ້ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້[๑] ທຳມາຣົມ ທີ່ໄດ້ຮູ້ແຈ້ງ ທີ່ຊາວໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງ ສະມະນະພາມ ເທວະດາແລະມະນຸດເຖິງ ສະແຫວງຫາ ຕອງຕາມດ້ວຍໃຈທັງໝົດ ດັ່ງນັ້ນ ຊາວໂລກຈຶ່ງຮຽກວ່າ ຕະຖາຄົດ

ຍ້ອນຕະຖາຄົດຕັດສະຮູ້ອະນຸດຕະຣະສຳມາສຳໂພທິຍານໃນຣາຕີໃດ ແລະ ປະຣິນິບພານດ້ວຍ ອະນຸປາທິເສສະນິບພານທາດໃນຣາຕີໃດ ໃນລະຫວ່າງນີ້ ຍ່ອມພາສິດ ກ່າວສະແດງອອກ ເຊິ່ງຄຳໃດ ຄຳນັ້ນທັງໝົດເປັນຈິງແນວນັ້ນແລ ບໍ່ເປັນແນວອື່ນ ດັ່ງນັ້ນ ຊາວໂລກຈຶ່ງຮຽກວ່າ ຕະຖາຄົດ

ຍ້ອນຕະຖາຄົດກ່າວແນວໃດ (ຍະຖາວາທີ) ກໍເຮັດແນວນັ້ນ (ຕະຖາກາຣີ) ເຮັດແນວໃດ (ຍະຖາກາຣີ) ກໍກ່າວແນວນັ້ນ (ຕະຖາວາທີ) ສັນນັ້ນ ຊາວໂລກຈຶ່ງຮຽກວ່າ ຕະຖາຄົດ

ພິກຂຸທັງຫຼາຍ ຍ້ອນຕະຖາຄົດເປັນຜູ້ຍິ່ງໃຫຍ່ ເຫັນຖ່ອງແທ້ ແຜ່ອຳນາດໄປໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ດັ່ງນັ້ນ ຊາວໂລກຈຶ່ງຮຽກວ່າ ຕະຖາຄົດ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເນື້ອຄວາມດັ່ງກ່າວມານີ້ແລ້ວ ໃນພຣະສູດນັ້ນ ຈຶ່ງຕັດຄາຖາປະພັນດັ່ງນີ້ ວ່າ

ບຸກຄົນໃດຮູ້ແຈ້ງໂລກທັງປວງຕາມຄວາມເປັນຈິງທັງໝົດ
ພາກຈາກໂລກທັງປວງ ບໍ່ມີກິເລດສັ່ງສົມຢູ່ໃນໂລກທັງປວງ
ບຸກຄົນນັ້ນແລຄອບງຳອາລົມໄດ້ທັງໝົດ

ເປັນນັກປາດ ປິດເປື້ອງກິເລດທີ່ຮ້ອຍຮັດໄດ້ທັງໝົດ
ບັນລຸນິບພານທີ່ມີຄວາມສະງົບຢ່າງຍິ່ງ ບໍ່ມີໄພແຕ່ບ່ອນໃດ
ບຸກຄົນນີ້ສິ້ນອາສະວະ ເປັນພຸດທະ
ບໍ່ມີທຸກ ຕັດຄວາມສົງໄສໄດ້
ບັນລຸຄວາມສິ້ນກຳທັງປວງ
ລຸດພົ້ນຍ້ອນສິ້ນອຸປະທິ
ບຸກຄົນນັ້ນເປັນຜູ້ມີໂຊກ ຕັດສະຣູ້
ປຽບຄືຣາດຊະສີທີ່ຍອດຢ້ຽມ
ປະກາດພົມມະຈັກແກ່ໂລກພ້ອມທັງເທວະໂລກ
ຍ້ອນເຫດນັ້ນ ເທວະດາແລະມະນຸດທັງຫຼາຍ
ທີ່ເຖິງພຣະພຸດທະເຈົ້າວ່າເປັນສະຣະນະ
ຈຶ່ງມາປະຊຸມກັນນະມັດສະການພຣະອົງຜູ້ຍິ່ງໃຫຍ່ ຊົງແກ່ກ້າ
ເທວະດາແລະມະນຸດທັງຫຼາຍນະມັດສະການພຣະພຸດທະເຈົ້ານັ້ນ
ຜູ້ຍິ່ງໃຫຍ່ ຊົງແກ່ກ້າ ດ້ວຍການສັນເສີນວ່າ
ເປັນຜູ້ເຝິກຝົນທີ່ປະເສີດສຸດໃນໝູ່ຜູ້ເຝິກຕົນທັງຫຼາຍ
ເປັນລືສີຜູ້ສະງົບກວ່າຜູ້ສະງົບທັງຫຼາຍ
ເປັນຜູ້ລຸດພົ້ນທີ່ຍອດຢ້ຽມກວ່າຜູ້ລຸດພົ້ນທັງຫຼາຍ
ເປັນຜູ້ຂ້າມພົ້ນທີ່ປະເສີດກວ່າຜູ້ຂ້າມພົ້ນທັງຫຼາຍ
ໃນໂລກພ້ອມທັງເທວະໂລກ ບໍ່ມີບຸກຄົນທີ່ປຽບທຽບກັບພຣະອົງໄດ້

ແມ່ນເນື້ອຄວາມນີ້ ພຣະຜູ້ມີພຣະພາກເຈົ້າກໍຕັດໄວ້ແລ້ວ ຂ້າພະເຈົ້າໄດ້ຟັງມາແນວນີ້ແລ

**ໂລກະສູດທີ ໑໓ ຈົບ**

**ຈະຕຸກກະນິບາດ ຈົບ**

## ລວມພຣະສູດທີ ມີໃນນິບາດນີ້ ຄື

໑. ພາມມະນະທຳມະຍາຄະສູດ
໒. ອາສະວັກຂະຍະສູດ
໕. ສີລະສຳປັນນະສູດ
໗. ສະພົມມະກະສູດ
໘. ສຸລະພະສູດ
໔. ສະມະນະພາມມະນະສູດ
໖. ຕັນຫຸບປາທະສູດ
໙. ພະຫຸກາຣະສູດ

໙. ກຸຫະສູດ
໑໐. ນະທີໂສຕະສູດ
໑໑. ຈະຣະສູດ
໑໒. ສຳປັນນະສີລະສູດ
໑໓. ໂລກະສູດ

ໃນຄຳພີອິຕິວຸດຕະກະ ມີຈຳນວນພຣະສູດທັງໝົດ ໑໑໒ ສູດ

**ອິຕິວຸດຕະກະ ຈົບ**

# ລວມພຣະສູດທີ່ມີໃນອິຕິວຸດຕະກະ

ເອກກະນິບາດ ມີ ໒໗ ສູດ ທຸກະນິບາດ ມີ ໒໒ ສູດ
ຕິກະນິບາດ ມີ ໕໐ ສູດ ຈະຕຸກກະນິບາດ ມີ ໑໓ ສູດ

ລວມພຣະສູດທີ່ ພຣະອະຣະຫັນທັງຫຼາຍຮິບໂຮມຮ້ອຍກອງໄວ້ ຕັ້ງຊື່ວ່າ ອິຕິວຸດຕະກະ ເພື່ອໃຫ້ພຣະພຸດທະສາດສະໜາດຳລົງຢູ່ຊົ່ວການລະນານ ຈຳນວນ ໑໑໒ ສູດ

**ອິຕິວຸດຕະກະ ຈົບ**

# ພຣະສູດຕັນຕະປິດົກ

## ຂຸດທະກະນິກາຍ ສຸດຕະນິບາດ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ

## ໑. ອຸຣະຄະວັກ

### ໝວດວ່າດ້ວຍການກຳຈັດກິເລດຄືງູລອກຄາບ

### ໑. ອຸຣະຄະສູດ

### ວ່າດ້ວຍການກຳຈັດກິເລດຄືງູລອກຄາບ

[໑] ພິກຂຸຜູ້ກຳຈັດຄວາມໂກດທີ່ເກີດຂຶ້ນໄດ້
ຄືໝໍງູກຳຈັດພິດງູທີ່ແຜ່ຊ່ານໄປດ້ວຍຢາກຳຈັດພິດ
ຊື່ວ່າລະຝັ່ງໃນໄດ້[໑] ຄືງູລອກຄາບຖິ້ມໄປ ສັນນັ້ນ

[໒] ພິກຂຸຜູ້ຕັດຣາຄະ[໒]ພ້ອມທັງອະນຸໄສກິເລດໄດ້ທັງໝົດ
ຄືຄົນລົງໄປຕັດດອກບົວຫຼວງທີ່ງອກຂຶ້ນໃນສະຈົນໝົດສິ້ນ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໓] ພິກຂຸຕັດຕັນຫາທີ່ຖ້ວມທັບສັດໂລກ ເປັນໄປຢ່າງສັບພັບ
ໃຫ້ເຫືອດແຫ້ງໄປເທື່ອລະໜ້ອຍ ໆ ຈົນໝົດສິ້ນ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໔] ພິກຂຸຜູ້ກຳຈັດມານະໄດ້ໝົດສິ້ນ
ຄືແມ່ນ້ຳໃຫຍ່ພັດຂົວໄມ້ອໍ້ທີ່ອ່ອນກຳລັງໃຫ້ທະລາຍໄປຫມົດສິ້ນ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໕] ພິກຂຸຜູ້ໃຊ້ປັນຍາຄົ້ນຄວ້າຢູ່
ບໍ່ພົ້ແກ່ນສານໃນພົບທັງຫຼາຍ[໑]
ຄືພານຄົ້ນຫາດອກໝາກເດື່ອເທິງຕົ້ນບໍ່ພົ້ ສັນນັ້ນ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໖]	ພິກຂຸຜູ້ບໍ່ມີກິເລດກຳເຣີບພາຍໃນຈິດ
ແລະລ່ວງພົ້ນຄວາມຈະເລີນແລະຄວາມເສື່ອມມີປະການຕ່າງ ໆ ໄດ້
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໗]	ພິກຂຸຜູ້ລະງັບວິຕົກທັງຫຼາຍໄດ້
ກຳນົດວິຕົກທຸກຢ່າງທີ່ເກີດຂຶ້ນພາຍໃນຕົນໄດ້ດ້ວຍດີ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໘]	ພິກຂຸຜູ້ບໍ່ເຮັດຄວາມພຽນຕຶງເກີນໄປ ບໍ່ຢ່ອນເກີນໄປ
ລ່ວງພົ້ນປະປັນຈະທຳ[໑]ໄດ້ທັງໝົດ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໙]	ພິກຂຸຜູ້ບໍ່ເຮັດຄວາມພຽນຕຶງເກີນໄປ ບໍ່ຢ່ອນເກີນໄປ
ຮູ້ສິ່ງທັງໝົດ[໒]ໃນໂລກວ່າ ມີພາວະຜັນແປ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໑໐]	ພິກຂຸຜູ້ບໍ່ເຮັດຄວາມພຽນຕຶງເກີນໄປ ບໍ່ຢ່ອນເກີນໄປ
ຮູ້ສິ່ງທັງໝົດໃນໂລກວ່າ ມີພາວະຜັນແປ ເປັນຜູ້ປາສະຈາກໂລພະ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໑໑]	ພິກຂຸຜູ້ບໍ່ເຮັດຄວາມພຽນຕຶງເກີນໄປ ບໍ່ຢ່ອນເກີນໄປ
ຮູ້ສິ່ງທັງໝົດໃນໂລກວ່າ ມີພາວະຜັນແປ ເປັນຜູ້ປາສະຈາກຣາຄະ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໑໒]	ພິກຂຸຜູ້ບໍ່ເຮັດຄວາມພຽນຕຶງເກີນໄປ ບໍ່ຢ່ອນເກີນໄປ
ຮູ້ສິ່ງທັງໝົດໃນໂລກວ່າ ມີພາວະຜັນແປ ເປັນຜູ້ປາສະຈາກໂທສະ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໑໓]	ພິກຂຸຜູ້ບໍ່ເຮັດຄວາມພຽນຕຶງເກີນໄປ ບໍ່ຢ່ອນເກີນໄປ
ຮູ້ສິ່ງທັງໝົດໃນໂລກວ່າ ມີພາວະຜັນແປ ເປັນຜູ້ປາສະຈາກໂມຫະ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໑໔]	ພິກຂຸຜູ້ບໍ່ມີອະນຸໄສກິເລດ[໑]ໃດ ໆ
ແລະຖອນຮາກອະກຸສົນທຳ[໓]ໄດ້ໝົດສິ້ນ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໑໕] ພິກຂຸຜູ້ບໍ່ມີກິເລດທີ່ເກີດຈາກຄວາມກະວົນກະວາຍໃດ ໆ
ອັນເປັນປັດໄຈເພື່ອມາສູ່ຝັ່ງໃນ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໑໖] ພິກຂຸຜູ້ບໍ່ມີກິເລດທີ່ເກີດຈາກຕັນຫານຸໄສຄືປ່າໃດ ໆ
ເຊິ່ງເປັນເຫດກຳນົດຄວາມຜູກພັນໄວ້ໃນພົບ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

[໑໗] ພິກຂຸຜູ້ລະນິວອນ[១] ໕ ໄດ້
ຂ້າມພົ້ນຄວາມສົງໄສໄດ້ແລ້ວ ປາສະຈາກກິເລດພຽງດັ່ງລູກສອນ
ຊື່ວ່າລະຝັ່ງໃນໄດ້ ຄືງູລອກຄາບຖິ້ມໄປ ສັນນັ້ນ

**ອຸຣະຄະສູດທີ ໑ ຈົບ**

# ໒. ທະນິຍະສູດ

## ວ່າດ້ວຍການໂຕ້ຕອບລະຫວ່າງນາຍທະນິຍະກັບພຣະພຸດທະເຈົ້າ

[໑໘] (ນາຍທະນິຍະເຈົ້າຂອງງົວກ່າວດັ່ງນີ້)
ຂ້າພະເຈົ້າປຸງອາຫານສຳເລັດຮຽບຮ້ອຍແລ້ວ ຣີດນ້ຳນົມງົວໄວ້ແລ້ວ
ຢູ່ຮ່ວມກັບບໍລິວານຊ່ວຍເຫຼືອກັນ ໃກ້ຝັ່ງແມ່ນ້ຳມະຮີ
ມຸງຫຼັງຄາກັ້ນຝາເຮືອນ ນຳໄຟມາດັງໄວ້ຮຽບຮ້ອຍ
ຝົນເອີຍ ຫາກທ່ານຢາກຕົກກໍເຊີນຕົກລົງມາເທີ້ນ

[໑໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ເຮົາເປັນຜູ້ບໍ່ໂກດ ປາສະຈາກກິເລດຄືຕະປູຕຶງໃຈ
ພັກແຮມ ໑ ຣາຕີ ໃກ້ຝັ່ງແມ່ນ້ຳມະຮີ
ເພິງທີ່ພັກຄືອັດຕະພາບ ກໍປາສະຈາກຫຼັງຄາເຄື່ອງມຸງບັງ
ກອງໄຟຄືຣາຄະເປັນຕົ້ນກໍດັບໝົດແລ້ວ
ຝົນເອີຍ ຫາກທ່ານຢາກຕົກກໍເຊີນຕົກລົງມາເທີ້ນ

[໒໐] (ນາຍທະນິຍະເຈົ້າຂອງງົວກ່າວດັ່ງນີ້)
ຝູງງົວຂອງຂ້າພະເຈົ້າບໍ່ມີເຮືອດແລະຍຸງມາລົບກວນ
ທ່ຽວຫາກິນ ຢູ່ແຄມຝັ່ງແມ່ນ້ຳທີ່ມີຫຍ້າງອກງາມ

ຈຶ່ງສາມາດທົນຝົນທີ່ຕົກລົງມາໄດ້ດີ
ຝົນເອີຍ ຫາກທ່ານຍາກຕົກກໍເຊີນຕົກລົງມາເທີ້ນ

[໘໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ເຮົາມັດແພຄືອະຣິຍະມັກ ຕົກແຕ່ງຄືພໍ່າເພັງດີແລ້ວ
ກຳຈັດແມ່ນ້ຳຄືກິເລດໄດ້ແລ້ວ ຂ້າມໄປຈົນເຖິງຝັ່ງແລ້ວ[୭]
ຈຶ່ງບໍ່ມີຄວາມຕ້ອງການແພນັ້ນອີກຕໍ່ໄປ
ຝົນເອີຍ ຫາກທ່ານຍາກຕົກກໍເຊີນຕົກລົງມາເທີ້ນ

[໘໘] (ນາຍທະນີຍະເຈົ້າຂອງງົວກ່າວດັ່ງນີ້)
ພັນລະຍາຂອງຂ້າພະເຈົ້າເປັນຍິງເຊື່ອຟັງ ບໍ່ໂລເລ[໒]
ຄອງຮັກຮ່ວມກັນມາດົນຫຼາຍປີ ເປັນທີ່ໄວ້ວາງໃຈຂອງຂ້າພະເຈົ້າ
ຄວາມຊົ່ວ[໓]ໃດ ໆ ຂອງນາງ ຂ້າພະເຈົ້າບໍ່ເຄີຍໄດ້ຍິນເລີຍ
ຝົນເອີຍ ຫາກທ່ານຍາກຕົກກໍເຊີນຕົກລົງມາເທີ້ນ

[໘໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຈິດຂອງເຮົາເຊື່ອຟັງເຮົາ ລຸດພົ້ນກິເລດແລ້ວ
ເຮົາເຝິກອົບຮົມມາດົນຈົນເປັນຈິດທີ່ເຝິກຫັດດີແລ້ວ
ດັ່ງນັ້ນ ເຮົາຈຶ່ງບໍ່ມີຄວາມຊົ່ວ[໔]ໃດ ໆ ຕໍ່ໄປ
ຝົນເອີຍ ຫາກທ່ານຍາກຕົກກໍເຊີນຕົກລົງມາເທີ້ນ

[໘໔] (ນາຍທະນີຍະເຈົ້າຂອງງົວກ່າວດັ່ງນີ້)
ຂ້າພະເຈົ້າເປັນຜູ້ເຮັດວຽກງານຂອງຕົນເອງລ້ຽງຊີວິດ
ທັງບຸດທິດາຂອງຂ້າພະເຈົ້າກໍພ້ອມໜ້າ ບໍ່ມີໂລກໄພໄຂ້ເຈັບ
ຄວາມຊົ່ວ[໑]ໃດ ໆ ຂອງບຸດທິດາເຫຼົ່ານັ້ນ ຂ້າພະເຈົ້າບໍ່ເຄີຍໄດ້ຍິນເລີຍ
ຝົນເອີຍ ຫາກທ່ານຍາກຕົກກໍເຊີນຕົກລົງມາເທີ້ນ

[໘໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ເຮົາບໍ່ເປັນລູກຈ້າງໃຜ[໒]
ທ່ຽວໄປດ້ວຍຄວາມເປັນສັບພັນຍູ
ຜູ້ບໍ່ມີຄວາມຕ້ອງການໃນໂລກທັງປວງ
ເຮົາຈຶ່ງບໍ່ມີຄວາມຕ້ອງການດ້ວຍຄ່າຈ້າງອີກຕໍ່ໄປ
ຝົນເອີຍ ຫາກທ່ານຍາກຕົກກໍເຊີນຕົກລົງມາເທີ້ນ

[໔໖] (ນາຍທະນິຍະເຈົ້າຂອງງົວກ່າວດັ່ງນີ້)
ໃນຈຳນວນຝູງງົວຂອງຂ້າພະເຈົ້ານີ້
ມີທັງງົວໜຸ່ມທີ່ຍັງບໍ່ໄດ້ເຝິກ
ງົວນ້ອຍທີ່ຍັງດື່ມນົມ ແມ່ງົວທີ່ກຳລັງຖືພາ
ແມ່ງົວໄວຈະເລີນພັນ ແລະງົວສຳຄັນທີ່ເປັນຈ່າຝູງ
ຝົນເອີຍ ຫາກທ່ານຍາກຕົກກໍເຊີນຕົກລົງມາເທີ້ນ

[໔໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ໃນຈຳນວນຝູງງົວຄືສາສະນະທຳຂອງເຮົານີ້
ບໍ່ມີທັງງົວໜຸ່ມທີ່ຍັງບໍ່ໄດ້ເຝິກ[໕]
ງົວນ້ອຍທີ່ຍັງດື່ມນົມ[໑] ແມ່ງົວທີ່ກຳລັງຕັ້ງທ້ອງ[໒]
ແມ່ງົວໄວຈະເລີນພັນ໌ແລະງົວສຳຄັນທີ່ເປັນຈ່າຝູງ[໓]
ຝົນເອີຍ ຫາກທ່ານຍາກຕົກກໍເຊີນຕົກລົງມາເທີ້ນ

[໔໘] (ນາຍທະນິຍະເຈົ້າຂອງງົວກ່າວດັ່ງນີ້)
ຂ້າພະເຈົ້າປັກເສົາສຳລັບລ່າມງົວໄວ້ແໜ້ນໜາ ບໍ່ໂຍກຄອນ
ເຊືອກພິເສດສຳລັບລ່າມງົວທັງຫຼາຍ
ກໍຟັ້ນດ້ວຍຫຍ້າປ້ອງໃໝ່ ໆ ມີຮູບຊົງກະທັດຮັດດີ
ເຖິງແມ່ນງົວໜຸ່ມ ໆ ຈະດີ້ນດຶງ ກໍບໍ່ສາມາດເຮັດໃຫ້ຂາດໄດ້ເລີຍ
ຝົນເອີຍ ຫາກທ່ານຍາກຕົກກໍເຊີນຕົກລົງມາເທີ້ນ

[໔໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ເຮົາໄດ້ຕັດເຄື່ອງຜູກມັດທັງຫຼາຍ
ຄືງົວອຸສະພະກຳຈັດເຊືອກທີ່ລ່າມໄວ້ຈົນຂາດສະບັ້ນ
ທຳລາຍເຄືອຫົວກຸດຄືຊ້າງທຳລາຍເຄືອຫົວກຸດຈົນແຫຼກລະອຽດ[໔]
ຈຶ່ງບໍ່ຕ້ອງກັບມາເກີດອີກ
ຝົນເອີຍ ຫາກທ່ານຍາກຕົກກໍເຊີນຕົກລົງມາເທີ້ນ

[໕໐] (ພຣະສັງຄີຕິກາຈານກ່າວດັ່ງນີ້)
ທັນໃດນັ້ນເອງ ຝົນຫ່າໃຫຍ່ໄດ້ຕົກລົງມາ
ຈົນນ້ຳຖ້ວມເຕັມທັງບ່ອນຫຼຸບແລະບ່ອນໂນນ
ນາຍທະນິຍະເຈົ້າຂອງງົວໄດ້ຍິນສຽງຝົນທີ່ກຳລັງຕົກຢູ່
ໄດ້ຂາບທູນເນື້ອຄວາມດັ່ງນີ້ວ່າ

[໓໑]	ເປັນລາບຂອງພວກຂ້າພຣະອົງບໍ່ໜ້ອຍເລີຍ
ທີ່ພວກຂ້າພຣະອົງໄດ້ເຫັນພຣະຜູ້ມີພຣະພາກເຈົ້າ
ຂ້າແດ່ພຣະອົງຜູ້ມີພຣະຈັກຂຸ
ພວກຂ້າພຣະອົງຂໍເຖິງພຣະອົງເປັນສະຣະນະ
ຂ້າແດ່ພຣະມະຫາມຸນີ ຂໍພຣະອົງຊົງເປັນພຣະສາດສະດາ
ຂອງພວກຂ້າພຣະອົງເທີ້ນ

[໓໔]	ຂ້າພຣະອົງແລະພັນລະຍາມີສັດທາເຊື່ອຟັງພຣະອົງ
ຂໍປະພຶດພົມມະຈັນໃນສຳນັກຂອງພຣະສຸຄົດເຈົ້າ
ຂ້າພຣະອົງທັງສອງຂໍເປັນຜູ້ໄປເຖິງຝັ່ງແຫ່ງຊາດແລະມໍລະນະ
ຈະເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້

[໓໓]	(ມານຜູ້ມີບາບກ່າວດັ່ງນີ້)
ຄົນມີບຸດກໍເພີດເພີນບຸດ
ເຊັ່ນດຽວກັບຄົນມີງົວກໍເພີດເພີນງົວ
ຍ້ອນຄົນມີອຸປະທິ[9]ເປັນເຫດເພີດເພີນ
ຄົນທີ່ບໍ່ມີອຸປະທິຍ່ອມບໍ່ເພີດເພີນເລີຍ

[໓໔]	(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຄົນມີບຸດກໍເສົ້າໂສກຍ້ອນບຸດ
ເຊັ່ນດຽວກັບຄົນມີງົວກໍເສົ້າໂສກຍ້ອນງົວ
ຍ້ອນຄົນມີອຸປະທິເປັນເຫດເສົ້າໂສກ
ຄົນທີ່ບໍ່ມີອຸປະທິ ຍ່ອມບໍ່ເສົ້າໂສກເລີຍ

**ທະນິຍະສູດທີ ໔ ຈົບ**

## ໓. ຂັຄຄະວິສານະສູດ[9]

## ວ່າດ້ວຍພຣະປັດເຈກສຳພຸດທະເຈົ້າຜູ້ປະພຶດຢູ່ຜູ້ດຽວຄືນໍແຮດ

[໓໕]	(ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ບຸກຄົນຍົກໂທດໃນສັດທຸກຈຳພວກ
ບໍ່ບຽດບຽນສັດໜຶ່ງສັດໃດໃນບັນດາສັດເຫຼົ່ານັ້ນ
ບໍ່ຕ້ອງການບຸດ (ແລ້ວ) ຈະເພິ່ງຕ້ອງການສະຫາຍຈາກໄສນໍ

ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ[໒]

[໓໖] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ຄວາມຮັກຍ່ອມມີແກ່ຜູ້ມີຄວາມກ່ຽວຂ້ອງ
ທຸກນີ້ຍ່ອມເປັນໄປຕາມຄວາມຮັກ
ບຸກຄົນເມື່ອເພ່ງເຫັນໂທດອັນເກີດຈາກຄວາມຮັກ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໓໗] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ບຸກຄົນເມື່ອອະນຸເຄາະມິດ ສະຫາຍຜູ້ໃຈດີ
ມີໃຈຜູກພັນ ຍ່ອມເຮັດປະໂຫຍດ[໑]ໃຫ້ເສື່ອມໄປໄດ້
ບຸກຄົນເມື່ອເພ່ງເຫັນໄພໃນຄວາມເຊີຍຊິດ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໓໘] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ກໍໄຜ່ກວ້າງໃຫຍ່ເກາະກ່ຽວກັນໄວ້ ສັນໃດ
ຄວາມຫ່ວງໃຍໃນບຸດແລະທາຣະ
ກໍກວ້າງໃຫຍ່ເກາະກ່ຽວໄວ້ ສັນນັ້ນ
ບຸກຄົນເມື່ອບໍ່ກ່ຽວຂ້ອງຄືໜໍ່ໄຜ່
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໓໙] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ເນື້ອໃນປ່າ ບໍ່ໄດ້ຖືກຜູກມັດໄວ້
ຍ່ອມທ່ຽວຫາອາຫານໄດ້ຕາມຄວາມພໍໃຈ ສັນໃດ
ວິນຍູຊົນເມື່ອເພ່ງເຫັນທຳທີ່ໃຫ້ເຖິງຄວາມເສຣີ[໑]
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໔໐] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງເປ່ງອຸທານດັ່ງນີ້)
ໃນທ່າມກາງສະຫາຍ ຍ່ອມມີການເປີກສາກັນ
ໃນເລື້ອງບ່ອນຢູ່ ເລື້ອງການດຳລົງຕົນ ເລື້ອງການໄປ ເລື້ອງການທ່ຽວຈາຣິກ
ບຸກຄົນເມື່ອເພ່ງເຫັນການບວດທີ່ໃຫ້ເຖິງຄວາມເສຣີ
ທີ່ພວກຄົນພານບໍ່ມຸ້ງຫວັງ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໔໑] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ໃນທ່າມກາງສະຫາຍ ຍ່ອມມີການຫຼິ້ນ ມີຄວາມຍິນດີ
ແລະໃນບຸດກໍຍ່ອມມີຄວາມຮັກອັນເຕັມປ່ຽມ
ບຸກຄົນເມື່ອລັງກຽດຄວາມພັດພາກຈາກສິ່ງເປັນທີ່ຮັກ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໔໒] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງເປ່ງອຸທານດັ່ງນີ້)
ພຣະປັດເຈກສຳພຸດທະເຈົ້າແຜ່ເມດຕາໄປທັງ ໔ ທິດ ບໍ່ຂັດເຄືອງ
ຍິນດີດ້ວຍປັດໄຈຕາມມີຕາມໄດ້໑
ຄອບງຳອັນຕະລາຍທັງຫຼາຍ ແລະບໍ່ຫວາດສຽວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໔໓] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ແມ່ນບັນພະຊິດພວກໜຶ່ງ ແລະຄະລືຫັດທີ່ກຳລັງຄອງເຮືອນ
ສົງເຄາະໄດ້ຍາກ໒
ບຸກຄົນເພິ່ງເປັນຜູ້ຂົນຂວາຍໜ້ອຍທັງໃນຜູ້ອື່ນແລະໃນບຸດ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໔໔] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ພຣະປັດເຈກສຳພຸດທະເຈົ້າຜູ້ກ້າຫານ
ປົງເຄື່ອງໝາຍຄະລືຫັດແລ້ວ໓
ຕັດເຄື່ອງຜູກມັດຂອງຄະລືຫັດແລ້ວ
ຄືຕົ້ນທອງຫຼາງທີ່ໃບລຸດຫຼົ່ນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໔໕] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ຖ້າບຸກຄົນເພິ່ງໄດ້ສະຫາຍຜູ້ມີປັນຍາຮັກສາຕົນ
ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ໑ ເປັນນັກປາດ
ຄອບງຳອັນຕະລາຍທັງປວງໄດ້ແລ້ວ
ເພິ່ງມີໃຈແຊ່ມຊື່ນ ມີສະຕິ ທ່ຽວໄປກັບສະຫາຍນັ້ນເທີ້ນ

[໔໖] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ຖ້າບຸກຄົນບໍ່ເພິ່ງໄດ້ສະຫາຍຜູ້ມີປັນຍາຮັກສາຕົນ
ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ ເປັນນັກປາດ

ກໍເພິ່ງປະພຶດຢູ່ຜູ້ດຽວເທີ້ນ
ຄືພຣະຣາຊາຊົງລະຖິ້ມແຄວ້ນທີ່ຊົງຊະນະແລ້ວ
ຊົງປະພຶດຢູ່ພຣະອົງດຽວ
ແລະຄືຊ້າງມາຕັງຄະລະຖິ້ມຝູງຢູ່ໂຕດຽວໃນປ່າ ສັນນັ້ນ໒

[໔໗] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ເຮົາສັນເສີນສະຫາຍສຳປະທາໂດຍແທ້
ບຸກຄົນຄວນຄົບສະຫາຍຜູ້ປະເສີດສຸດ (ຫຼື) ຜູ້ສະເໝີກັນ
ຖ້າບຸກຄົນບໍ່ໄດ້ສະຫາຍເຫຼົ່ານີ້ ເພິ່ງເປັນຜູ້ບໍຣິໂພກປັດໄຈອັນບໍ່ມີໂທດ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໔໘] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ບຸກຄົນເຫັນກຳໄລຄຳ ໒ ວົງ ອັນສຸກປັ່ງ
ທີ່ຊ່າງຄຳເຮັດສຳເລັດຢ່າງດີ ກະທົບກັນຢູ່ທີ່ຂໍ້ມືແລ້ວ໑
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໔໙] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງເປັ່ງອຸທານດັ່ງນີ້)
ດ້ວຍອາການແບບນີ້ ການກ່າວວາຈາ໑
ຫຼືຄວາມກ່ຽວຂ້ອງກັບເພື່ອນ ເພິ່ງມີແກ່ເຮົາ
ບຸກຄົນເມື່ອເພ່ງເຫັນໄພ໒ນີ້ຕໍ່ໄປ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໕໐] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ຍ້ອນກາມທັງຫຼາຍສວຍງາມ
ມີຣົດແຊບ ໜ້າອອນຊອນໃຈ
ຍົວະຍຸຈິດດ້ວຍອາລົມຫຼາຍຮູບແບບ
ບຸກຄົນເຫັນໂທດໃນກາມມະຄຸນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໕໑] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ຄຳວ່າ ກາມ ນີ້ ເປັນອັນຕະລາຍ ເປັນຄືຝີ ເປັນອຸປັດທະວະ
ເປັນພະຍາດ ເປັນຄືລູກສອນ ແລະເປັນໄພ
ບຸກຄົນເຫັນໄພນີ້ໃນກາມມະຄຸນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໕໔] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ບຸກຄົນຄອບງຳໄພທັງປວງເຫຼົ່ານີ້ ຄື
ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ
ລົມ ແດດ ເຮືອດ ແລະສັດເລືອຄານແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໕໙] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ພຣະປັດເຈກສຳພຸດທະເຈົ້າລະຖິ້ມໝູ່ ມີຂັນ[໑]ເກີດດີແລ້ວ
ມີດອກບົວ (ຄືທຳ) ເປັນຜູ້ຍິ່ງໃຫຍ່
ຢູ່ໃນປ່າຕາມຄວາມພໍໃຈໄດ້
ຄືນາຄະ[໒]ລະຖິ້ມຝູງແລ້ວຢູ່ໃນປ່າໄດ້ຕາມພໍໃຈ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໕໔] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ບຸກຄົນສຳຜັດວິມຸດຕິໃດ ເຊິ່ງເກີດຂຶ້ນຕາມສະໄໝ
ວິມຸດຕິນັ້ນ ເປັນໄປບໍ່ໄດ້ສຳລັບບຸກຄົນ
ຜູ້ຍິນດີການຄຸກຄີດ້ວຍໝູ່ຄະນະ
ບຸກຄົນພິຈາຣະນາຄຳເວົ້າຂອງພຣະປັດເຈກສຳພຸດທະເຈົ້າ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໕໕] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ)ປະພຶດລ່ວງທິດຖິອັນເປັນສ້ຽນໜາມ[໓]
ເຖິງນິຍາມ[໔] ໄດ້ສະເພາະມັກ[໕]ແລ້ວ
ເປັນຜູ້ມີຍານເກີດຂຶ້ນແລ້ວ ບໍ່ຕ້ອງໃຫ້ຜູ້ອື່ນແນະນຳ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໕໖] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ເປັນຜູ້ບໍ່ໂລບ
ບໍ່ຫຼອກລວງ ບໍ່ຢາກ ບໍ່ມີຄວາມລົບຫຼູ່
ກຳຈັດກາສະວະ (ກິເລດຄືນ້ຳຍ້ອມ) ແລະໂມຫະໄດ້ແລ້ວ
ບໍ່ມີຄວາມຫວັງ[໖]ໃນໂລກທັງປວງ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໕໗] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ບຸກຄົນເພິ່ງລະເວັ້ນສະຫາຍຊົ່ວຜູ້ບໍ່ເຫັນປະໂຫຍດ
ຜູ້ຕັ້ງຢູ່ໃນທຳທີ່ຜິດ
ບໍ່ເພິ່ງຄົບຄົນຜູ້ຂົນຂວາຍ໌ ແລະຜູ້ພະໝາດດ້ວຍຕົນເອງ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໕໘] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ບຸກຄົນເພິ່ງຄົບມິດຜູ້ເປັນພະຫູສູດ ຊົງທຳ
ຜູ້ຍິ່ງໃຫຍ່ ມີປະຕິພານ ຮູ້ຈັກປະໂຫຍດແລ້ວ
ເພິ່ງກຳຈັດຄວາມສົງໄສໄດ້
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໕໙] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ບໍ່ຊື່ນຊົມການຫຼິ້ນ
ຄວາມຍິນດີ ແລະຄວາມສຸກໃນໂລກ ບໍ່ໃສ່ໃຈ
ງົດເວັ້ນຈາກຖານະແຫ່ງການປະດັບຕົກແຕ່ງ ເວົ້າຄຳຈິງ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໖໐] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ລະຖິ້ມບຸດ ພັນລະຍາ ບິດາ ມານດາ
ຊັບ ທັນຍະຊາດ ພວກພ້ອງ ແລະກາມ ຕາມສ່ວນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໖໑] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ການນີ້ເປັນເຄື່ອງຂ້ອງ ມີຄວາມສຸກໜ້ອຍ
ໃນການນີ້ມີຄວາມຍິນດີໜ້ອຍ ມີທຸກຫຼາຍ
ຜູ້ມີປັນຍາຮູ້ວ່າ ການນີ້ເປັນຄືຂໍເຫຼັກແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໖໒] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ທຳລາຍສັງໂຍດແລ້ວ
ຄືສັດນ້ຳທຳລາຍຕາໜ່າງ
ແລະຄືໄຟໄໝ້ເຊື້ອມອດໝົດໄປບໍ່ກັບມາ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໖໓] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ພິກຂຸເປັນຜູ້ບໍ່ສອດສ່າຍຈັກຂຸ
ແລະບໍ່ເປັນຜູ້ມີຕີນຢູ່ບໍ່ສຸກ
ຄຸ້ມຄອງອິນຊີ ຮັກສາໃຈໄດ້ແລ້ວ
ບໍ່ຊຸ່ມດ້ວຍກິເລດ ໄຟກິເລດບໍ່ໄດ້ເຜົາ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໖໔] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ປົງເຄື່ອງໝາຍຄະລິຫັດແລ້ວ
ຄອງຜ້າກາສາວະ ອອກບວດ
ຄືຕົ້ນທອງຫຼາງທີ່ໃບລຸດຫຼົ່ນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ໑

[໖໕] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ບໍ່ທຳຄວາມຍິນດີໃນຣົດ ບໍ່ໂລເລ
ຜູ້ທີ່ບໍ່ຕ້ອງລ້ຽງຄົນອື່ນ ທ່ຽວບິນທະບາດຕາມລຳດັບຮ່ອມ
ມີໃຈບໍ່ຜູກພັນໃນຕະກູນຕ່າງ ໆ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໖໖] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ລະນິວອນ ໕ ຢ່າງ
ກຳຈັດອຸປະກິເລດ[໒]ແຫ່ງຈິດທັງປວງໄດ້ແລ້ວ
ບໍ່ອີງອາໄສ ຕັດຄວາມຮັກ ແລະຄວາມຊັງໄດ້ແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໖໗] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ລະຖິ້ມສຸກແລະທຸກ
ໂສມະນັດ ໂທມະນັດກ່ອນ ໆ ໄດ້ແລ້ວ
ໄດ້ອຸເປກຂາແລະສະມະຖະອັນສະອາດແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໖໘] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ຕັ້ງຄວາມພຽນ
ເພື່ອບັນລຸປະໂຫຍດຢ່າງຍິ່ງ[໓]

ມີຈິດບໍ່ຫຍ່ອນຍານ ບໍ່ປະພຶດຂີ້ຄ້ານ
ມີຄວາມບາກບັ່ນໝັ້ນຄົງ ເຂົ້າເຖິງເຫື່ອແຮງແລະກຳລັງແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໖໙] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ບໍ່ລະການຫຼີບຫຼີກ[໖]ແລະຊານ
ປະພຶດທຳສົມຄວນແກ່ທຳເປັນປະຈຳ
ພິຈາລະນາເຫັນໂທດໃນພົບແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໗໐] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ປາຖະໜາຄວາມສິ້ນຕັນຫາ
ບໍ່ຜະໝາດ ບໍ່ໂງ່ຈ້ຳ ຄົງແກ່ຮຽນ ມີສະຕິ
ຜູ້ມີສັງຂາຣະທຳ ຜູ້ແນ່ນອນ ມີຄວາມມຸ້ງໝັ້ນ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໗໑] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ບໍ່ສະດຸ້ງຍ້ອນສຽງ ຄືຣາດຊະສີ
ບໍ່ຕິດຕາໜ່າງ[໗] ຄືລົມ
ບໍ່ປຽກນ້ຳ[໘] ຄືບົວ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໗໒] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ພະຍາສີຫະຣາດມີແຂ້ວເປັນກຳລັງ
ຂົ່ມຂີ່ ຄອບງຳເນື້ອທັງຫຼາຍທ່ຽວໄປ ສັນໃດ
ພຣະປັດເຈກສຳພຸດທະເຈົ້າກໍມີປັນຍາເປັນກຳລັງ
ຄອບງຳບຸກຄົນທັງຫຼາຍດ້ວຍປັນຍາ
ໃຊ້ເສນາສະນະອັນສະຫງັດ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໗໓] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ເສບອາໄສເມດຕາ ກະລຸນາ
ມຸທິຕາ ແລະອຸເປກຂາ ອັນເປັນວິມຸດຕິຕາມການ
ສັດໂລກທັງປວງບໍ່ໄດ້ກຽດຊັງ

ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໗໔] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
(ພຣະປັດເຈກສຳພຸດທະເຈົ້າ) ລະຣາຄະ ໂທສະ ແລະໂມຫະ
ທຳລາຍສັງໂຍດໄດ້ແລ້ວ
ບໍ່ສະດຸ້ງໃນເວລາສິ້ນຊີວິດ
ຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

[໗໕] (ພຣະປັດເຈກສຳພຸດທະເຈົ້າອົງໜຶ່ງກ່າວດັ່ງນີ້)
ທຸກມື້ນີ້ ມິດທັງຫຼາຍມີປະໂຫຍດເປັນເຫດ
ຈຶ່ງຄົບແລະເສບດ້ວຍ
ມິດທີ່ບໍ່ມຸ້ງປະໂຫຍດຫາໄດ້ຍາກ
ມະນຸດທັງຫຼາຍມີປັນຍາມຸ້ງປະໂຫຍດຕົນ ບໍ່ສະອາດ[໑]
ພຣະປັດເຈກສຳພຸດທະເຈົ້າຈຶ່ງປະພຶດຢູ່ຜູ້ດຽວຄືນໍແຮດ

**ຂັກຄະວິສານະສູດທີ ໓ ຈົບ**

## ໔. ກະສີພາຣະທະວາຊະສູດ[໒]

## ວ່າດ້ວຍພາຣະທະວາຊະພາມຜູ້ເປັນຊາວນາ

ຂ້າພະເຈົ້າໄດ້ຟັງມາແບບນີ້ ວ່າ

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ທັກຂິນາຄີຣີມະຫາວິຫານ[໓] ໃກ້ໝູ່ບ້ານພາມຊື່ເອກນາລາ ແຄວ້ນມະຄົດ ສະໄໝນັ້ນ ໃນລະດູຫວ່ານເຂົ້າ ກະສີພາຣະທະວາຊະພາມໄດ້ປະກອບໄຖຈຳນວນ ໕໐໐ ເຫຼັ້ມ ກຽມໄຖນາ

ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປສູ່ບ່ອນເຮັດວຽກງານຂອງກະສີພາຣະທະວາຊະພາມ ຂະນະນັ້ນ ກະສີພາຣະທະວາຊະພາມ ກຳລັງລ້ຽງອາຫານກັນຢູ່ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ສະຖານທີ່ລ້ຽງອາຫານຂອງເຂົາແລ້ວປະທັບຢືນຢູ່ບ່ອນທີ່ສົມຄວນ

ກະສີພາຣະທະວາຊະພາມໄດ້ເຫັນພຣະຜູ້ມີພຣະພາກເຈົ້າປະທັບຢືນບິນທະບາດຢູ່ ຈຶ່ງຂາບທູນດັ່ງນີ້ວ່າ ທ່ານພຣະສະມະນະ ຂ້າພະເຈົ້າໄຖແລະຫວ່ານ ເມື່ອໄຖແລະຫວ່ານແລ້ວ ຈຶ່ງ

ບໍຣິໂພກ ທ່ານພຣະສະມະນະ ແມ່ນທ່ານກໍຈົ່ງໄຖແລະຫວ່ານ ເມື່ອໄຖແລະຫວ່ານແລ້ວ ຈົ່ງບໍຣິໂພກ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ ແມ່ນເຮົາກໍໄຖແລະຫວ່ານ ເມື່ອໄຖແລະຫວ່ານແລ້ວ ຈຶ່ງບໍຣິໂພກ

ກະສິພາຣະທະວາຊະພາມທູນຖາມວ່າ ທ່ານພຣະສະມະນະ ຂ້າພະເຈົ້າບໍ່ເຫັນແອກ ໄຖ ຜານ ຄັນແຫຼນ ຫຼືງົວທັງຫຼາຍຂອງທ່ານພຣະໂຄດົມເລີຍ ຢ່າງໃດກໍ່ຕາມ ທ່ານພຣະໂຄດົມ ຍັງເວົ້າແນວນີ້ວ່າ ພາມ ແມ່ນເຮົາກໍໄຖແລະຫວ່ານ ເມື່ອໄຖແລະຫວ່ານແລ້ວ ຈຶ່ງບໍຣິໂພກ

ລຳດັບນັ້ນ ກະສິພາຣະທະວາຊະພາມໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

[໗໖] ທ່ານປະຕິຍານວ່າເປັນຊາວນາ
ແຕ່ຂ້າພະເຈົ້າບໍ່ເຫັນສຳພາຣະແຫ່ງການໄຖຂອງທ່ານເລີຍ
ທ່ານຜູ້ເປັນຊາວນາ ຂ້າພະເຈົ້າຖາມແລ້ວ
ຂໍຈົ່ງບອກ ຂ້າພະເຈົ້າຈະຮູ້ສຳພາຣະແຫ່ງການໄຖຂອງທ່ານໄດ້ແນວໃດ

[໗໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ສັດທາເປັນພືດ ຄວາມພຽນເປັນຝົນ
ປັນຍາຂອງເຮົາເປັນແອກແລະໄຖ ຫິຣິເປັນງອນໄຖ
ໃຈເປັນເຊືອກ ສະຕິຂອງເຮົາເປັນຜານແລະຄັນແຫຼນ

[໗໘] ເຮົາຄຸ້ມຄອງກາຍ ຄຸ້ມຄອງວາຈາໄດ້ແລ້ວ
ສັງລວມໃນການບໍຣິໂພກອາຫານ
ເຮົາເສຍຫຍ້າ (ຄືວາຈາປິ້ນໄປ່) ດ້ວຍຄຳສັດ
ໂສຣັດຈະຂອງເຮົາຊ່ອຍທຳງານໃຫ້ສຳເລັດ

[໗໙] ຄວາມພຽນຂອງເຮົາຊ່ອຍນຳທຸລະໄປ
ໃຫ້ເຖິງຄວາມກະເສມຈາກໂຍຄະ ນຳໄປບໍ່ຖອຍຫຼັງ
ນຳໄປເຖິງທີ່ເຊິ່ງບຸກຄົນໄປແລ້ວບໍ່ເສົ້າໂສກ

[໘໐] ເຮົາໄຖນາແນວນີ້
ນາທີ່ເຮົາໄຖນັ້ນມີຜົນເປັນອະມະຕະ[១]
ບຸກຄົນເມື່ອໄຖນາແນວນີ້ແລ້ວ
ຍ່ອມພົ້ນຈາກທຸກທັງປວງໄດ້

ລຳດັບນັ້ນ ກະສິພາຣະທະວາຊະພາມເທເຂົ້າປາຍາດໃສ່ຖາດສຳຣິດໃບໃຫຍ່ແລ້ວນ້ອມຖວາຍ ພຣະຜູ້ມີພຣະພາກເຈົ້າ ພ້ອມກັບຂາບທູນວ່າ ຂໍທ່ານພຣະໂຄດົມຈົ່ງບໍຣິໂພກເຂົ້າປາຍາດເທີ້ນ ຍ້ອນທ່ານຜູ້ຈະເລີນຊີງເປັນຊາວນາ ຊີງໄຖນາອັນມີຜົນເປັນອະມະຕະ

[໗໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ເຮົາບໍ່ບໍຣິໂພກໂພຊະນະ
ທີ່ໄດ້ມາຍ້ອນການຂັບກ່ອມ
ພາມ ທຳນັ້ນບໍ່ແມ່ນທຳຂອງຜູ້ພິຈາລະນາ
ພຣະພຸດທະເຈົ້າທັງຫຼາຍ
ບໍ່ຮັບໂພຊະນະທີ່ໄດ້ມາຍ້ອນການຂັບກ່ອມ
ພາມ ເມື່ອທຳມີຢູ່
ການລ້ຽງຊີບແບບນີ້ກໍຍັງມີຢູ່

[໗໘] ອັນໜຶ່ງ ທ່ານຈົ່ງບຳລຸງພຣະຂີນາສົບ
ຜູ້ບໍລິສຸດບໍລິບູນ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ມີຄວາມຄະນອງສະງົບແລ້ວ ດ້ວຍເຂົ້າແລະນ້ຳ
ຍ້ອນວ່າການບຳລຸງນັ້ນ
ເປັນເຂດບຸນຂອງຜູ້ສະແຫວງບຸນ

ກະສິພາຣະທະວາຊະພາມທູນຖາມວ່າ ທ່ານພຣະໂຄດົມ ເມື່ອເປັນແນວນີ້ ຂ້າພະເຈົ້າຈະນຳເຂົ້າປາຍາດນີ້ໄປຖວາຍໃຜນໍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ ເຮົາບໍ່ເຫັນໃຜໃນໂລກ ພ້ອມທັງເທວະໂລກມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດທີ່ບໍຣິໂພກເຂົ້າປາຍາດນັ້ນແລ້ວ ຈະໃຫ້ຍ່ອຍໄດ້ຕາມປົກກະຕິ ນອກເສຍຈາກຕະຖາຄົດຫຼືສາວົກຂອງຕະຖາຄົດ ທໍ່ນັ້ນ ພາມ ຖ້າເປັນແນວນັ້ນ ທ່ານຈົ່ງນຳເຂົ້າປາຍາດນີ້ໄປຖອກຖິ້ມເທິງພື້ນດິນທີ່ປາສະຈາກ ຕົ້ນໄມ້ໃບຫຍ້າ ຫຼືຖອກລົງໃນນ້ຳທີ່ບໍ່ມີສັດອາໄສຢູ່ເທີ້ນ

ລຳດັບນັ້ນ ກະສິພາຣະທະວາຊະພາມຈຶ່ງນຳເຂົ້າປາຍາດນັ້ນ ໄປຖອກຖິ້ມລົງໃນນ້ຳທີ່ບໍ່ມີສັດອາໄສຢູ່ ພໍເຂົ້າປາຍາດນັ້ນຖືກຖອກຈົມລົງໃນນ້ຳ ກໍເກີດສຽງດັງແສ່ ໆ ຜາກົດ ຄວັນໂຂມງຟຸ້ງຂຶ້ນຮອບດ້ານ ຄືກ້ອນເຫຼັກທີ່ຖືກເຜົາໄຟໃຫ້ຮ້ອນຢູ່ເມີດມື້ແລ້ວ ຖືກນຳໄປຢ່ອນລົງໃນນ້ຳ ກໍເກີດສຽງດັງແສ່ ໆ ຜາກົດຄວັນກຸ້ມຟຸ້ງຂຶ້ນຮອບດ້ານ ສັນນັ້ນ

ເມື່ອເຫັນດັ່ງນັ້ນ ກະສິພາຣະທະວາຊະພາມຈຶ່ງສະຫຼົດໃຈ ເກີດອາການຂົນຫົວລຸກ ກົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໝອບລົງແທບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າ ພ້ອມກັບຂາບທູນດັ່ງນີ້ວ່າ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຍິ່ງທ່ານພຣະໂຄດົມຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟ ໃນບ່ອນມືດ ໂດຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ ຂ້າແດ່ທ່ານພຣະໂຄດົມ ຂ້າ ພຣະອົງເພິ່ງໄດ້ບັນພະຊາ ເພິ່ງໄດ້ອຸປະສົມບົດໃນສຳນັກຂອງທ່ານພຣະໂຄດົມດ້ວຍເທີ້ນ ຂ້ານ້ອຍ

ກະສິພາຣະທະວາຊະພາມໄດ້ບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ຫຼັງຈາກ ອຸປະສົມບົດແລ້ວບໍ່ດົນ ທ່ານພຣະພາຣະທະວາຊະຈາກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ໄດ້ຮູ້ແຈ້ງວ່າຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວເຮັດກິດທີ່ຄວນເຮັດສຳເລັດແລ້ວບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ

ຈຶ່ງເປັນອັນວ່າ ທ່ານພຣະພາຣະທະວາຊະໄດ້ເປັນພຣະອະຣະຫັນອົງໜຶ່ງໃນບັນດາ ພຣະອະຣະຫັນທັງຫຼາຍ

**ກະສິພາຣະທະວາຊະສູດທີ ໔ ຈົບ**

## ໕. ຈຸນທະສູດ

## ວ່າດ້ວຍບັນຫາຂອງນາຍຈຸນທະກຳມາຣະບຸດ

[໗໓] (ນາຍຈຸນທະກຳມາຣະບຸດທູນຖາມບັນຫາດັ່ງນີ້)
ຂ້າພຣະອົງຂໍທູນຖາມພຣະພຸດທະເຈົ້າຜູ້ເປັນມຸນີ
ມີພຣະປັນຍາຫຼາຍ ຊົງເປັນເຈົ້າຂອງພຣະທຳ ປາສະຈາກຕັນຫາ
ຊົງເປັນຜູ້ປະເສີດສຸດໃນບັນດາສັບພະສັດມີສັດ ໔ ຕີນເປັນຕົ້ນ
ຊົງເປັນຜູ້ເລີດກວ່ານາຍສາຣະຖີຜູ້ເຝິກທັງຫຼາຍວ່າ
ໃນໂລກນີ້ມີສະມະນະຢູ່ຈັກຈຳພວກ

ຂໍພຣະອົງໂຜດຕັດບອກໃຫ້ຂ້າພຣະອົງຮູ້ດ້ວຍເທີ້ນ

[໗໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

ຈຸນທະ ສະມະນະມີຢູ່ ໔ ຈຳພວກ ບໍ່ມີສະມະນະຈຳພວກທີ ໕
ເຮົາຖືກທ່ານຖາມຕໍ່ໜ້າແນວນີ້ ກໍຈະຊີ້ແຈ່ງໃຫ້ທ່ານຮູ້
ສະມະນະ ໔ ຈຳພວກນັ້ນ ຄື

໑. ສະມະນະຜູ້ຊະນະກິເລດທັງປວງດ້ວຍມັກ
໒. ສະມະນະຜູ້ສະແດງມັກແກ່ຊົນເຫຼົ່າອື່ນ
໓. ສະມະນະຜູ້ດຳລົງຢູ່ໃນມັກ
໔. ສະມະນະຜູ້ປະທຸດສະຮ້າຍມັກ

[໗໕] (ນາຍຈຸນທະກຳມາຣະບຸດທູນຖາມບັນຫາດັ່ງນີ້)

ພຣະພຸດທະເຈົ້າທັງຫຼາຍຊົງບັນຍັດຮຽກ
ສະມະນະຜູ້ຊະນະກິເລດທັງປວງດ້ວຍມັກວ່າແນວໃດ
ຊົງບັນຍັດຮຽກສະມະນະຜູ້ມີປົກກະຕິເພ່ງມັກ ບໍ່ມີຜູ້ປຽບທຽບນັ້ນວ່າແນວໃດ
ຊົງບັນຍັດຮຽກສະມະນະຜູ້ດຳລົງຢູ່ໃນມັກນັ້ນວ່າແນວໃດ
ຊົງບັນຍັດຮຽກສະມະນະຜູ້ປະທຸດສະຮ້າຍມັກນັ້ນວ່າແນວໃດ
ຂ້າພຣະອົງທູນຖາມແລ້ວຂໍພຣະອົງຕັດບອກແກ່ຂ້າພຣະອົງ
ຂໍພຣະອົງຊົງຊີ້ແຈ່ງແກ່ຂ້າພຣະອົງເທີ້ນ

[໗໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

ພຣະພຸດທະເຈົ້າທັງຫຼາຍຊົງບັນຍັດຮຽກ
ສະມະນະຜູ້ຂ້າມພົ້ນຄວາມສົງໄສໄດ້ເດັດຂາດ
ປາສະຈາກກິເລດຄືລູກສອນ ຍິນດີຍິ່ງໃນນິບພານ
ບໍ່ຕິດຢູ່ໃນຕັນຫາ ຜູ້ແນະນຳສັ່ງສອນຊາວໂລກພ້ອມທັງເທວະໂລກວ່າ
ເປັນສະມະນະຜູ້ຊະນະກິເລດທັງປວງດ້ວຍມັກ

[໗໗] ພິກຂຸໃດໃນທຳວິໄນນີ້ ຮູ້ວ່າ ນິບພານເປັນບໍຣົມທຳ
ແລ້ວບອກ ເປີດເຜີຍນິບພານທຳໃນທຳວິໄນນີ້
ພຣະພຸດທະເຈົ້າທັງຫຼາຍຊົງບັນຍັດຮຽກພິກຂຸ
ຜູ້ຕັດຄວາມສົງໄສໄດ້ແລ້ວ ເປັນມຸນີ
ບໍ່ມີຕັນຫາເຮັດໃຫ້ຫວັ່ນໄຫວນັ້ນວ່າ
ເປັນສະມະນະຈຳພວກທີ ໒ ຜູ້ສະແດງມັກ

[໗໗] ພິກຂຸໃດເປັນຜູ້ສັງລວມແລ້ວ ມີສະຕິ ເສບບົດອັນບໍ່ມີໂທດ[១]
ດຳລົງຢູ່ໃນມັກຄືບົດແຫ່ງທຳທີ່ສະແດງໄວ້ດີແລ້ວ
ພຣະພຸດທະເຈົ້າທັງຫຼາຍຊົງບັນຍັດຮຽກພິກຂຸນັ້ນວ່າ
ເປັນສະມະນະຈຳພວກທີ ໓ ຜູ້ດຳລົງຢູ່ໃນມັກ

[໗໘] ພິກຂຸໃດເຮັດຕົນເອົາແບບຢ່າງພຣະອະຣິຍະ ຜູ້ມີຂໍ້ວັດປະຕິບັດດີງາມ
ມັກເອົາໜ້າ ປະທຸດສະຮ້າຍຕະກູນ
ຄະນອງກາຍ ວາຈາ ໃຈ ມີມາຍາ ບໍ່ສັງລວມ ເວົ້າບໍ່ມີສາຣະ
ພິກຂຸຜູ້ທ່ຽວເອົາແບບຢ່າງ ຈັດເປັນສະມະນະຈຳພວກທີ ໔ ຜູ້ປະທຸດສະຮ້າຍມັກ

[໘໐] ອັນໜຶ່ງ ຄະລືຫັດຜູ້ໄດ້ສະດັບແລ້ວ ເປັນອະຣິຍະສາວົກ ມີປັນຍາ
ຮູ້ຊື້ງເຖິງລັກສະນະສະມະນະທັງ ໔ ຈຳພວກນັ້ນ
ແລ້ວຮູ້ວ່າ ສະມະນະທັງໝົດບໍ່ເປັນແນວນີ້
ຍ້ອນເຫັນແນວນີ້ ສັດທາຂອງເຂົາຈຶ່ງບໍ່ເສື່ອມໄປ
ຍ້ອນເຫັນວ່າ ບຸກຄົນຈະເຮັດສະມະນະຜູ້ສົມບູນດ້ວຍສີນ
ໃຫ້ສະເໝີກັບສະມະນະຜູ້ທຸສີນ
ແລະສະມະນະຜູ້ບໍລິສຸດໃຫ້ສະເໝີກັບສະມະນະຜູ້ບໍ່ບໍລິສຸດ
ໄດ້ແນວໃດນໍ

**ຈຸນທະສູດທີ ໕ ຈົບ**

## ໖. ປາພະວະສູດ

## ວ່າດ້ວຍທາງແຫ່ງຄວາມເສື່ອມ

ຂ້າພະເຈົ້າໄດ້ຟັງມາແນວນີ້ ວ່າ

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ເມື່ອຣາຕີຜ່ານໄປ[១] ເທວະດາອົງໜຶ່ງ ມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງໄປທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

[໘໑] ຂ້າພຣະອົງມາທູນຖາມເຖິງຄົນຜູ້ມີແຕ່ຄວາມເສື່ອມ

ກັບພຣະຜູ້ມີພຣະພາກເຈົ້າຜູ້ໂຄດົມວ່າ
ອັນໃດເປັນທາງແຫ່ງຄວາມເສື່ອມ

[໕໒] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຜູ້ຈະເລີນກໍຮູ້ໄດ້ງ່າຍ[໒] ຜູ້ເສື່ອມກໍຮູ້ໄດ້ງ່າຍ
ຜູ້ຈະເລີນຕ້ອງການທຳ[໓] ຜູ້ເສື່ອມຊັງທຳ

[໕໓] (ເທວະດາທູນຖາມດັ່ງນີ້)
ດ້ວຍພຣະດຳຣັດທີ່ຕັດບອກນີ້ ຂ້າພຣະອົງຈຶ່ງຮູ້ແຈ້ງວ່າ
ຂໍ້ນີ້ນັ້ນເປັນທາງແຫ່ງຄວາມເສື່ອມຂໍ້ທີ ໑
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກ
ທາງແຫ່ງຄວາມເສື່ອມຂໍ້ທີ ໒ ວ່າເປັນແນວໃດ?

[໕໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຄົນທີ່ມີອະສັດຕະບຸຣຸດເປັນທີ່ຮັກ ບໍ່ເຮັດສັດຕະບຸຣຸດໃຫ້ເປັນທີ່ຮັກ
ພໍໃຈທຳຂອງອະສັດຕະບຸຣຸດ
ນັ້ນເປັນທາງແຫ່ງຄວາມເສື່ອມ

[໕໕] (ເທວະດາທູນຖາມດັ່ງນີ້)
ດ້ວຍພຣະດຳຣັດທີ່ຕັດບອກນີ້ ຂ້າພຣະອົງຈຶ່ງຮູ້ແຈ້ງວ່າ
ຂໍ້ນີ້ນັ້ນເປັນທາງແຫ່ງຄວາມເສື່ອມຂໍ້ທີ ໒
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກ
ທາງແຫ່ງຄວາມເສື່ອມຂໍ້ທີ ໓ ວ່າເປັນແນວໃດ?

[໕໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຄົນຜູ້ມັກຫຼັບຢູ່ສະເໝີ ມັກສະມາຄົມ[໔]
ບໍ່ດຸໝັ່ນຂະຫຍັນພຽນ ຂີ້ຄ້ານ ຄຽດງ່າຍ
ນັ້ນເປັນທາງແຫ່ງຄວາມເສື່ອມ

[໕໗] (ເທວະດາທູນຖາມດັ່ງນີ້)
ດ້ວຍພຣະດຳຣັດທີ່ຕັດບອກນີ້ ຂ້າພຣະອົງຈຶ່ງຮູ້ແຈ້ງວ່າ
ຂໍ້ນີ້ນັ້ນເປັນທາງແຫ່ງຄວາມເສື່ອມຂໍ້ທີ ໓
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກ
ທາງແຫ່ງຄວາມເສື່ອມຂໍ້ທີ ໔ ວ່າເປັນແນວໃດ?

[໙໗]　　(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຄົນຜູ້ມີຄວາມສາມາດລ້ຽງຕົນແລະຜູ້ອື່ນໄດ້
ແຕ່ບໍ່ລ້ຽງດູມານດາບິດາຜູ້ແກ່ຊະຣາ ຜູ້ຜ່ານໄວໜຸ່ມໄວສາວແລ້ວ
ນັ້ນເປັນທາງແຫ່ງຄວາມເສື່ອມ

[໙໙]　　(ເທວະດາທູນຖາມດັ່ງນີ້)
ດ້ວຍພຣະດຳຣັດທີ່ຕັດບອກນີ້ ຂ້າພຣະອົງຈຶ່ງຮູ້ແຈ້ງວ່າ
ຂໍ້ນີ້ນັ້ນເປັນທາງແຫ່ງຄວາມເສື່ອມຂໍ້ທີ ໔
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກ
ທາງແຫ່ງຄວາມເສື່ອມຂໍ້ທີ ໕ ວ່າເປັນແນວໃດ?

[໑໐໐]　(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຄົນຜູ້ກ່າວມຸສາວາດ ຫຼອກລວງສະມະນະຫຼືພາມ
ຫຼືແມ່ນກະທັ່ງວະນິພົກຍາຈົກອື່ນ ໆ
ນັ້ນເປັນທາງແຫ່ງຄວາມເສື່ອມ

[໑໐໑]　(ເທວະດາທູນຖາມດັ່ງນີ້)
ດ້ວຍພຣະດຳຣັດທີ່ຕັດບອກນີ້ ຂ້າພຣະອົງຈຶ່ງຮູ້ແຈ້ງວ່າ
ຂໍ້ນີ້ນັ້ນເປັນທາງແຫ່ງຄວາມເສື່ອມຂໍ້ທີ ໕
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກ
ທາງແຫ່ງຄວາມເສື່ອມຂໍ້ທີ ໖ ວ່າເປັນແນວໃດ?

[໑໐໒]　(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຄົນຜູ້ມີຊັບຫຼາຍ ມີເງິນຄຳຂອງກິນເຫຼືອເຟືອ
ກິນຂອງແຊບພຽງຄົນດຽວດ
ນັ້ນເປັນທາງແຫ່ງຄວາມເສື່ອມ

[໑໐໓]　(ເທວະດາທູນຖາມດັ່ງນີ້)
ດ້ວຍພຣະດຳຣັດທີ່ຕັດບອກນີ້ ຂ້າພຣະອົງຈຶ່ງຮູ້ແຈ້ງວ່າ
ຂໍ້ນີ້ນັ້ນເປັນທາງແຫ່ງຄວາມເສື່ອມຂໍ້ທີ ໖
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກ
ທາງແຫ່ງຄວາມເສື່ອມຂໍ້ທີ ໗ ວ່າເປັນແນວໃດ?

[໑໐໔]　(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

ຄົນກະດ້າງຍ້ອນຊາດ ກະດ້າງຍ້ອນຊັບ
ແລະກະດ້າງຍ້ອນໂຄດ
ມັກດູໝິ່ນຍາດຂອງຕົນ
ນັ້ນເປັນທາງແຫ່ງຄວາມເສື່ອມ

[໑໐໕] (ເທວະດາທູນຖາມດັ່ງນີ້)
ດ້ວຍພຣະດຳຣັດທີ່ຕັດບອກນີ້ ຂ້າພຣະອົງຈຶ່ງຮູ້ແຈ້ງວ່າ
ຂໍ້ນີ້ນັ້ນເປັນທາງແຫ່ງຄວາມເສື່ອມຂໍ້ທີ ໗
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກ
ທາງແຫ່ງຄວາມເສື່ອມຂໍ້ທີ ໘ ວ່າເປັນແນວໃດ?

[໑໐໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຄົນຜູ້ເປັນນັກເລງແມ່ຍິງ ນັກເລງສຸຣາ ແລະນັກເລງການພະນັນ
ມັກລ້າງຜານຊັບສົມບັດທີ່ຕົນຫາມາໄດ້
ນັ້ນເປັນທາງແຫ່ງຄວາມເສື່ອມ

[໑໐໗] (ເທວະດາທູນຖາມດັ່ງນີ້)
ດ້ວຍພຣະດຳຣັດທີ່ຕັດບອກນີ້ ຂ້າພຣະອົງຈຶ່ງຮູ້ແຈ້ງວ່າ
ຂໍ້ນີ້ນັ້ນເປັນທາງແຫ່ງຄວາມເສື່ອມຂໍ້ທີ ໘
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກ
ທາງແຫ່ງຄວາມເສື່ອມຂໍ້ທີ ໙ ວ່າເປັນແນວໃດ?

[໑໐໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຄົນຜູ້ບໍ່ຍິນດີພັນລະຍາຂອງຕົນ ມັກຫຼ່ງວຍິງແພດສະຫຍາ
ມັກຄົບຊູ້ສູ່ສາວພັນລະຍາຄົນອື່ນ
ນັ້ນເປັນທາງແຫ່ງຄວາມເສື່ອມ

[໑໐໙] (ເທວະດາທູນຖາມດັ່ງນີ້)
ດ້ວຍພຣະດຳຣັດທີ່ຕັດບອກນີ້ ຂ້າພຣະອົງຈຶ່ງຮູ້ແຈ້ງວ່າ
ຂໍ້ນີ້ນັ້ນເປັນທາງແຫ່ງຄວາມເສື່ອມຂໍ້ທີ ໙
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກ
ທາງແຫ່ງຄວາມເສື່ອມຂໍ້ທີ ໑໐ ວ່າເປັນແນວໃດ?

[໑໑໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

ຊາຍແກ່ໄດ້ຍິງສາວໄວລຸ້ນ ມີຖັນທີ່ໜ່ວຍໝາກພັບມາເປັນພັນລະຍາ
ມັກຈະນອນບໍ່ຄ່ອຍຫຼັບ ຍ້ອນຄວາມຫວງຍິງສາວລຸ້ນນັ້ນ
ນັ້ນເປັນທາງແຫ່ງຄວາມເສື່ອມ

[໑໑໑] (ເທວະດາທູນຖາມດັ່ງນີ້)
ດ້ວຍພຣະດຳຣັດທີ່ຕັດບອກນີ້ ຂ້າພຣະອົງຈຶ່ງຮູ້ແຈ້ງວ່າ
ຂໍ້ນີ້ນັ້ນເປັນທາງແຫ່ງຄວາມເສື່ອມຂໍ້ທີ ໑໐
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກ
ທາງແຫ່ງຄວາມເສື່ອມຂໍ້ທີ ໑໑ ວ່າເປັນແນວໃດ?

[໑໑໒] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຄົນແຕ່ງຕັ້ງຍິງຫຼືຊາຍຜູ້ເປັນນັກເລງ
ໃຊ້ຈ່າຍເງິນຄຳຟຸ່ມເຟືອຍ ໄວ້ໃນຄວາມເປັນໃຫຍ່
ນັ້ນເປັນທາງແຫ່ງຄວາມເສື່ອມ

[໑໑໓] (ເທວະດາທູນຖາມດັ່ງນີ້)
ດ້ວຍພຣະດຳຣັດທີ່ຕັດບອກນີ້ ຂ້າພຣະອົງຈຶ່ງຮູ້ແຈ້ງວ່າ
ຂໍ້ນີ້ນັ້ນເປັນທາງແຫ່ງຄວາມເສື່ອມຂໍ້ທີ ໑໑
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກ
ທາງແຫ່ງຄວາມເສື່ອມຂໍ້ທີ ໑໒ ວ່າເປັນແນວໃດ?

[໑໑໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຄົນຜູ້ເກີດໃນຂັດຕິຍະຕະກູນ ມີໂພຄະໜ້ອຍ
ແຕ່ມີຄວາມມັກໃຫຍ່ໃຝ່ສູງ ປາຖະໜາຈະຄອງຣາດ
ນັ້ນເປັນທາງແຫ່ງຄວາມເສື່ອມ

[໑໑໕] ບັນດິດຜູ້ສົມບູນດ້ວຍທັດສະນະອັນປະເສີດ
ພິຈາລະນາເຫັນທາງແຫ່ງຄວາມເສື່ອມໃນໂລກ ດັ່ງກ່າວມານີ້ແລ້ວ
ທ່ານຍ່ອມຄົບໂລກທີ່ຈະເລີນແນ່ນອນ

**ປາພະວະສູດທີ ໖ ຈົບ**

# ໗. ວະສະລະສູດ

## ວ່າດ້ວຍລັກສະນະຄົນຊົ່ວ

ຂ້າພະເຈົ້າໄດ້ຟັງມາແນວນີ້ວ່າ

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດເຂົ້າໄປບິນທະບາດໃນເມືອງສາວັດຖີ ສະໄໝນັ້ນ ທີ່ເຮືອນອັກຄິກະພາຣະທະວາຊະພາມ ມີການຈູດໄຟເຜົາກຽມເຮັດພິທີບູຊາໄຟ ພຣະຜູ້ມີພຣະພາກເຈົ້າສະເດັດທ່ຽວບິນທະບາດມາຕາມລຳດັບຮ່ອມ ໃນນະຄອນສາວັດຖີ ຈົນສະເດັດເຂົ້າໄປເຖິງນິເວດຂອງ ອັກຄິກະພາຣະທະວາຊະພາມ

ອັກຄິກະພາຣະທະວາຊະພາມໄດ້ເຫັນພຣະຜູ້ມີພຣະພາກເຈົ້າສະເດັດມາແຕ່ໄກແນວນັ້ນຈຶ່ງໄດ້ກ່າວດັ່ງນີ້ວ່າ ຢຸດຢູ່ຊ່ຳນັ້ນແລ ຄົນຫົວໂລ້ນ ຢຸດຢູ່ຊ່ຳນັ້ນແລ ສະມະນະ ຢຸດຢູ່ຊ່ຳນັ້ນແລ ຄົນຊົ່ວ[໑]

ເມື່ອພາມກ່າວແນວນີ້ ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພາມ ທ່ານຮູ້ຈັກຄົນຊົ່ວ ຫຼືທຳທີ່ເຮັດໃຫ້ເປັນຄົນຊົ່ວບໍ

ອັກຄິກະພາຣະທະວາຊະພາມຕອບວ່າ ທ່ານພຣະໂຄດົມ ຂ້າພະເຈົ້າບໍ່ຮູ້ຈັກຄົນຊົ່ວຫຼືທຳທີ່ເຮັດໃຫ້ເປັນຄົນຊົ່ວ ດີແລ້ວ ຖ້າທ່ານພຣະໂຄດົມຮູ້ ກໍຈົ່ງສະແດງທຳໃຫ້ຂ້າພະເຈົ້າຮູ້ຈັກຄົນຊົ່ວຫຼືທຳທີ່ເຮັດໃຫ້ເປັນຄົນຊົ່ວແດ່

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພາມ ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈະກ່າວ

ອັກຄິກະພາຣະທະວາຊະພາມ ທູນຮັບສະໜອງພຣະດຳຣັດແລ້ວ
ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດພຣະດຳຣັດນີ້ ວ່າ

[໑໑໖] ຄົນມັກໂກດ ມັກຜູກອາຄາດ ມັກລົບຫຼູ່ດູໝິ່ນ
ເຫັນຜິດເປັນຖືກ ມີມາຍາ
ເພິ່ງຮູ້ວ່າເປັນຄົນຊົ່ວ[໑]

[໑໑໗] ຄົນຜູ້ມັກບຽດບຽນສັດທຸກຈຳພວກໃນໂລກນີ້
ບໍ່ມີຄວາມອີດູໃນເພື່ອນມະນຸດແລະສັດອື່ນ

ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໑໗] ຄົນຜູ້ມັກທຳລາຍຊີວິດຜູ້ອື່ນ ທ່ຽວປຸ້ນສະດົມ
ຖືກປະນາມວ່າເປັນໂຈນປຸ້ນຂ້າຊາວບ້ານຮ້ານຕະຫຼາດ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໑໙] ຄົນທ່ຽວລັກເອົາຊັບສິນເງິນຄຳ
ທີ່ເຈົ້າຂອງຫວງແຫນບໍ່ໄດ້ໃຫ້ ໃນບ້ານຫຼືໃນປ່າກໍຕາມ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໘໐] ຄົນກູ້ໜີ້ຢືມສິນເຂົາມາແລ້ວ
ຖືກທວງກັບກ່າວວ່າ ບໍ່ໄດ້ຢືມ ຫຼົບໜີໄປສາ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໘໑] ຄົນດັກຂ້າຫຼືທຳຮ້າຍຄົນເດີນທາງ ຊິງເອົາຊັບສົມບັດ
ຍ້ອນຄວາມຢາກໄດ້ຊັບສົມບັດພຽງເລັກໜ້ອຍຂອງເຂົາ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໘໒] ຄົນຖືກເຂົາອ້າງເປັນພະຍານ ແລ້ວກ່າວຄຳຕົວະ
ຍ້ອນຕົນເປັນເຫດ ຍ້ອນຜູ້ອື່ນເປັນເຫດ ຫຼືຍ້ອນຊັບເປັນເຫດ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໘໓] ຄົນທີ່ປະພຶດລ່ວງເກີນພັນລະຍາຂອງຍາດ ຫຼືຂອງເພື່ອນ
ຈະດ້ວຍການຂົ່ມຂືນຫຼືດ້ວຍຄວາມຍິນຍອມກັນກໍຕາມ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໘໔] ຄົນຜູ້ສາມາດລ້ຽງຕົນເອງແລະຜູ້ອື່ນໄດ້
ແຕ່ບໍ່ລ້ຽງດູມານດາບິດາຂອງຕົນ ຜູ້ແກ່ຊະຣາ
ຜ່ານໄວໜຸ່ມໄວສາວແລ້ວ ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໘໕] ຄົນຜູ້ທຸບຕີ ດຸດ່າມານດາບິດາ ພີ່ນ້ອງ
ພໍ່ເຖົ້າ ແມ່ເຖົ້າ ຫຼືພໍ່ຜົວ ແມ່ຜົວ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໘໖] ຄົນທີ່ຖືກຖາມເຖິງສິ່ງທີ່ເປັນປະໂຫຍດ

ກັບບອກສິ່ງທີ່ບໍ່ເປັນປະໂຫຍດ
ຫຼືເວົ້າກັບເກື່ອນບອກບໍ່ຊັດເຈນ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໘໗] ຄົນເຮັດບາບກຳໄວ້ແລ້ວ ປາຖະໜາວ່າ
ຄົນອື່ນຢ່າເພິ່ງຮູ້ວ່າເຮົາເຮັດ
ປົກປິດການກະທຳໄວ້
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໘໘] ຄົນໄປເຮືອນຜູ້ອື່ນ ຖືກຕ້ອນຮັບດ້ວຍໂພຊະນາຫານຢ່າງດີ
ແຕ່ພໍເຂົາມາເຮືອນຕົນແດ່ ກັບບໍ່ຕ້ອນຮັບເຂົາເຊັ່ນນັ້ນ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໘໙] ຄົນຜູ້ກ່າວມຸສາວາດ ຫຼອກລວງສະມະນະຫຼືພາມ
ຫຼືແມ່ນກະທັ່ງວະນິພົກຍາຈົກອື່ນ ໆ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໙໐] ຄົນທີ່ເມື່ອສະມະນະຫຼືພາມມາບິນທະບາດແຕ່ເຊົ້າ
ບໍ່ຖວາຍອາຫານບິນທະບາດ ກັບດ່າວ່າຂັບໄລ່
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໙໑] ໃນໂລກນີ້ຄົນຖືກໂມຫະຄອບງຳ
ຢາກໄດ້ສິ່ງຂອງເລັກໜ້ອຍຂອງຜູ້ອື່ນ
ກໍເວົ້າຈາຫຼອກລວງເຂົາເພື່ອໃຫ້ໄດ້ສິ່ງນັ້ນມາ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໙໒] ຄົນຜູ້ມັກຍົກຕົນ ແລະດູໝິ່ນຄົນອື່ນ
ປະພຶດຊົ່ວຊາມ ຍ້ອນຄວາມຖືໂຕຈັດຂອງຕົນ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໙໓] ຄົນໂຫດຮ້າຍ ມີຈິດໃຈຄັບແຄບ ປາຖະໜາຊົ່ວ
ມີຄວາມຂີ້ຖີ່ ໂອ້ອວດ ບໍ່ມີຫິຣິ ບໍ່ມີໂອດຕັບປະ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໙໔] ຄົນກ່າວຮ້າຍພຣະພຸດທະເຈົ້າຫຼືພຣະສາວົກ

ຂອງພຣະພຸດທະເຈົ້າທີ່ເປັນບັນພະຊິດຫຼືຄະລືຫັດ
ເພິ່ງຮູ້ວ່າເປັນຄົນຊົ່ວ

[໑໓໕] ຄົນບໍ່ເປັນພຣະອະຣະຫັນ ແຕ່ປະຕິຍານວ່າເປັນພຣະອະຣະຫັນ
ຊື່ວ່າເປັນຄືໂຈນໃນມະນຸດສາໂລກ ເທວະໂລກ ແລະພົມມະໂລກ
ເພິ່ງຮູ້ວ່າເປັນຄົນຊົ່ວຊາມຕໍ່າຊ້າທີ່ສຸດ

[໑໓໖] ຄົນທີ່ເຮົາກ່າວມາທັງໝົດນີ້ ເຮົາຮຽກວ່າເປັນຄົນຊົ່ວ
ຄົນຈະຊື່ວ່າເປັນຄົນຊົ່ວຍ້ອນຊາດກຳເນີດກໍເປັນໄປບໍ່ໄດ້
ຈະຊື່ວ່າເປັນພາມຍ້ອນຊາດກຳເນີດກໍເປັນໄປບໍ່ໄດ້
ແຕ່ຊື່ວ່າເປັນຄົນຊົ່ວຍ້ອນກຳ
ຊື່ວ່າເປັນພາມຍ້ອນກຳ

[໑໓໗] ທ່ານຈົ່ງຮູ້ຂໍ້ນັ້ນຕາມທີ່ເຮົາສະແດງນີ້ ຄື
ບຸດຄົນຈັນທານຜູ້ຜາກົດຊື່ວ່າມາຕັງຄະ
ຜູ້ປີ້ງໝາກິນ

[໑໓໘] ຕໍ່ມາ ນາຍມາຕັງຄະໄດ້ຮັບຍົດສັກໃຫຍ່ເຊິ່ງໄດ້ແສນຍາກ
ທັງກະສັດແລະພາມຈຳນວນຫຼາຍ ຕ່າງມາສູ່ທີ່ບຳລຸງຂອງເຂົາ

[໑໓໙] ເຂົາຂຶ້ນຍານອັນປະເສີດ[1]ໄປຕາມທາງໃຫຍ່[2]ທີ່ບໍ່ມີຝຸ່ນລະອອງ[3]
ລະກາມຣາຄະໄດ້ແລ້ວ ໄປເກີດໃນພົມມະໂລກ
ຊາດກຳເນີດຫ້າມເຂົາບໍ່ໃຫ້ໄປເກີດໃນພົມມະໂລກບໍ່ໄດ້

[໑໔໐] ພວກພາມທີ່ເກີດໃນຕະກູນສາທະຍາຍມົນ ມີໜ້າທີ່ຈົ່ມມົນ
ແຕ່ຜາກົດວ່າພວກເຂົາເຮັດບາບກຳຢູ່ເປັນປະຈຳ

[໑໔໑] ພາມພວກນັ້ນຖືກຕຳໜິໃນຊາດປັດຈຸບັນຕາຍແລ້ວກໍຕ້ອງໄປທຸກຄະຕິ
ຊາດກຳເນີດຫ້າມພວກເຂົາຈາກທຸກຄະຕິຫຼືຈາກການຕິຕຽນບໍ່ໄດ້

[໑໔໒] ຄົນຈະຊື່ວ່າເປັນຄົນຊົ່ວຍ້ອນຊາດກຳເນີດກໍເປັນໄປບໍ່ໄດ້
ຈະຊື່ວ່າເປັນພາມຍ້ອນຊາດກຳເນີດກໍເປັນໄປບໍ່ໄດ້
ແຕ່ຊື່ວ່າເປັນຄົນຊົ່ວຍ້ອນກຳ
ຊື່ວ່າເປັນພາມຍ້ອນກຳ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອັກຄິກະພາຣະທະວາຊະພາມໄດ້ຂາບທູນວ່າ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດ ໂດຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ວະສະລະສູດທີ ໗ ຈົບ**

## ໘. ເມດຕະສູດ[๑]

## ວ່າດ້ວຍການແຜ່ເມດຕາ

(ພຣະຜູ້ມີພຣະພາກເຈົ້າຕັດແກ່ພິກຂຸທັງຫຼາຍຜູ້ຢູ່ປ່າດັ່ງນີ້)

[໑໔໓] ຜູ້ສະຫຼາດໃນປະໂຫຍດ ມຸ້ງຫວັງບັນລຸສັນຕະບົດ
ຄວນພ່ຳເພັງວຽກງານ ຄວນເປັນຜູ້ອາດຫານ ຊື່ກົງ
ເຄັ່ງຄັດ ວ່າງ່າຍ ອ່ອນໂຍນ ແລະບໍ່ຈອງຫອງ

[໑໔໔] ຄວນເປັນຜູ້ສັນໂດດ ລ້ຽງງ່າຍ ມີກິດໜ້ອຍ
ມີຄວາມປະພຶດເບົາ ມີອິນຊີສະງົບ ມີປັນຍາຮັກສາຕົນ
ບໍ່ຄະນອງ ບໍ່ຢຶດຕິດໃນຕະກູນທັງຫຼາຍ

[໑໔໕] ອັນໜຶ່ງ ບໍ່ຄວນປະພຶດຄວາມເສຍຫາຍໃດ ໆ
ທີ່ຈະເປັນເຫດໃຫ້ວິນຍູຊົນເຫຼົ່າອື່ນຕຳໜິເອົາໄດ້
(ຄວນແຜ່ເມດຕາໄປໃນສັບພະສັດແນວນີ້ວ່າ)
ຂໍສັດທັງປວງຈົ່ງມີຄວາມສຸກ
ມີຄວາມກະເສມ ມີຕົນເປັນສຸກເທີ້ນ

[໑໔໖] ຄືເຫຼົ່າສັດທີ່ຍັງເປັນຜູ້ຕື່ນຕົກໃຈຫຼືເປັນຜູ້ໝັ້ນຄົງ
ຂໍສັດເຫຼົ່ານັ້ນທັງໝົດຈົ່ງມີຕົນເປັນສຸກເທີ້ນ
ເຫຼົ່າສັດທີ່ມີຂະໜາດກາຍຍາວ ຂະໜາດກາຍໃຫຍ່ ຂະໜາດກາຍປານກາງ
ຂະໜາດກາຍເຕ້ຍ ຂະໜາດກາຍຈ່ອຍ ຫຼືຂະໜາດກາຍຕຸ້ຍ

ຂໍສັດເຫຼົ່ານັ້ນທັງໝົດຈົ່ງມີຕົນເປັນສຸກເທີ້ນ

[໑໔໗] ເຫຼົ່າສັດທີ່ເຄີຍເຫັນກໍດີ ເຫຼົ່າສັດທີ່ບໍ່ເຄີຍເຫັນກໍດີ
ເຫຼົ່າສັດທີ່ຢູ່ໃກ້ແລະຢູ່ໄກກໍດີ ພູດຫຼືສໍາພະເວສີກໍດີ
ຂໍສັດເຫຼົ່ານັ້ນທັງໝົດຈົ່ງມີຕົນເປັນສຸກເທີ້ນ

[໑໔໘] ບໍ່ຄວນຂົ່ມເຫງ ບໍ່ຄວນດູໝິ່ນກັນແລະກັນໃນທຸກໂອກາດ
ບໍ່ຄວນປາຖະໜາທຸກແກ່ກັນແລະກັນ
ຍ້ອນຄວາມໂກດແລະຍ້ອນຄວາມແຄ້ນ

[໑໔໙] ຄວນແຜ່ເມດຕາຈິດທີ່ບໍ່ມີປະມານໄປສູ່ສັບພະສັດ
ຄືມານດາເຝົ້າຖະໜອມບຸດຄົນດຽວດ້ວຍຊີວິດ ສັນນັ້ນ

[໑໕໐] ອັນໜຶ່ງ ຄວນແຜ່ເມດຕາຈິດຊະນິດບໍ່ມີປະມານ
ກວ້າງຂວາງ ບໍ່ມີເວນ ບໍ່ມີສັດຕູໄປສູ່ສັດໂລກທົ່ວທັງໝົດ
ທັງຊັ້ນເທິງ ຊັ້ນລຸ່ມ ແລະຊັ້ນກາງ

[໑໕໑] ຜູ້ແຜ່ເມດຕາຈະຢືນ ຍ່າງ ນັ່ງ ຫຼືນອນ
ຄວນຕັ້ງສະຕິນີ້ໄວ້ຕະຫຼອດເວລາທີ່ຍັງບໍ່ງ່ວງ
ນັກປາດຮຽກການຢູ່ດ້ວຍເມດຕານີ້ວ່າ ພົມວິຫານ

[໑໕໒] ອັນໜຶ່ງ ຜູ້ແຜ່ເມດຕາທີ່ບໍ່ຢຶດຖືທິດຖິ
ມີສິນ ເຖິງພ້ອມດ້ວຍທັດສະນະ
ກໍາຈັດຄວາມຍິນດີໃນກາມມະຄຸນໄດ້ແລ້ວ
ກໍຈະບໍ່ເກີດໃນທ້ອງອີກຕໍ່ໄປ

**ເມດຕະສູດທີ ໘ ຈົບ**

## ໙. ເຫມະວະຕະສູດ

### ວ່າດ້ວຍເຫມະວະຕະຍັກທູນຖາມບັນຫາ

[໑໕໓] (ສາຕາຄິຣະຍັກກ່າວດັ່ງນີ້)
ມື້ນີ້ເປັນມື້ອຸໂປສົດ ໑໕ ຄໍ່າ
ຣາຕີທີ່ເປັນທິບຜາກົດແລ້ວ

ເຮົາທັງສອງໄປເຝົ້າພຣະໂຄດົມຜູ້ເປັນສາດສະດາ
ຊຶ່ງພຣະນາມສູງສົ່ງກັນດີກວ່າ

[໑໕໔] (ເຫມະວະຕະຍັກຖາມດັ່ງນີ້)
ພຣະໂຄດົມເປັນຜູ້ໝັ້ນຄົງ? ມີພຣະຫະໄທສະໝ່ຳສະເໝີ
ໃນສັດໂລກທຸກຈຳພວກແມ່ນບໍ?
ຊຶ່ງທຳຄວາມດຳຣິໃນອິດຖາຣົມແລະອະນິດຖາຣົມ
ໃຫ້ຢູ່ໃນອຳນາດໄດ້ແມ່ນບໍ?

[໑໕໕] (ສາຕາຄິຣະຍັກຕອບດັ່ງນີ້)
ພຣະໂຄດົມເປັນຜູ້ໝັ້ນຄົງ ມີພຣະຫະໄທສະໝ່ຳສະເໝີ
ໃນສັດໂລກທຸກຈຳພວກຈິງ
ແລະຊຶ່ງທຳຄວາມດຳຣິໃນອິດຖາຣົມແລະອະນິດຖາຣົມ
ໃຫ້ຢູ່ໃນອຳນາດໄດ້ຈິງ

[໑໕໖] (ເຫມະວະຕະຍັກຖາມດັ່ງນີ້)
ພຣະໂຄດົມບໍ່ຊຶ່ງຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ແມ່ນບໍ?
ຊຶ່ງສັງລວມໃນສັດທັງຫຼາຍແມ່ນບໍ?
ຊຶ່ງປະພຶດຫ່າງໄກຈາກການມະຄຸນແມ່ນບໍ?
ພຣະອົງບໍ່ຊຶ່ງລະຖິ້ມຊານແມ່ນບໍ?

[໑໕໗] (ສາຕາຄິຣະຍັກຕອບດັ່ງນີ້)
ພຣະໂຄດົມບໍ່ຊຶ່ງຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ຈິງ
ຊຶ່ງສັງລວມໃນສັດທັງຫຼາຍຈິງ
ຊຶ່ງປະພຶດຫ່າງໄກຈາກການມະຄຸນຈິງ
ພຣະອົງຕັດສະຮູ້ແລ້ວ ບໍ່ຊຶ່ງລະຖິ້ມຊານຈິງ

[໑໕໘] (ເຫມະວະຕະຍັກຖາມດັ່ງນີ້)
ພຣະໂຄດົມບໍ່ຕັດຄຳຕົວະແມ່ນບໍ?
ມີພຣະວາຈາບໍ່ຫຍາບຄາຍແມ່ນບໍ?
ບໍ່ຕັດຄຳສັບສົ່ແມ່ນບໍ? ບໍ່ຕັດຄຳບໍ່ມີສາຣະແມ່ນບໍ?

[໑໕໙] (ສາຕາຄິຣະຍັກຕອບດັ່ງນີ້)
ພຣະໂຄດົມບໍ່ຕັດຄຳຕົວະຈິງ

ມີພຣະວາຈາບໍ່ຫຍາບຄາຍຈິງ
ບໍ່ຕັດຄຳສັບສໍ່ຈິງ ບໍ່ຕັດຄຳບໍ່ມີສາຣະຈິງ
ຕັດຄຳທີ່ເປັນປະໂຫຍດແນວດຽວ
ຍ້ອນຊົງກຳນົດດ້ວຍພຣະປັນຍາ

[໑໖໐] (ເຫມະວະຕະຍັກຖາມດັ່ງນີ້)
ພຣະໂຄດົມບໍ່ຊົງຍິນດີໃນກາມທັງຫຼາຍແມ່ນບໍ?
ພຣະຫະໄທຂອງພຣະອົງບໍ່ຂຸ່ນມົວແມ່ນບໍ?
ພຣະອົງຊົງລ່ວງພົ້ນໂມຫະໄດ້ແມ່ນບໍ?
ພຣະອົງຊົງມີປັນຍາຈັກຂຸໃນທຳທັງຫຼາຍແມ່ນບໍ?

[໑໖໑] (ສາຕາຄິຣະຍັກຕອບດັ່ງນີ້)
ພຣະໂຄດົມບໍ່ຊົງຍິນດີໃນກາມທັງຫຼາຍຈິງ
ພຣະຫະໄທຂອງພຣະອົງບໍ່ຂຸ່ນມົວຈິງ
ພຣະອົງຊົງລ່ວງພົ້ນໂມຫະທັງປວງໄດ້ຈິງ
ພຣະອົງຕັດສະຣູ້ແລ້ວ ຊົງມີປັນຍາຈັກຂຸໃນທຳທັງຫຼາຍຈິງ

[໑໖໘] (ເຫມະວະຕະຍັກຖາມດັ່ງນີ້)
ພຣະໂຄດົມຊົງສົມບູນດ້ວຍວິດຊາແມ່ນບໍ?
ພຣະອົງຊົງມີຈະຣະນະບໍລິສຸດແມ່ນບໍ?
ພຣະອົງຊົງສິ້ນອາສະວະທັງຫຼາຍແມ່ນບໍ?
ພຣະອົງບໍ່ຊົງເກີດອີກແມ່ນບໍ?

[໑໖໓] (ສາຕາຄິຣະຍັກຕອບດັ່ງນີ້)
ພຣະໂຄດົມຊົງສົມບູນດ້ວຍວິດຊາຈິງ
ພຣະອົງຊົງມີຈະຣະນະບໍລິສຸດຈິງ
ພຣະອົງຊົງສິ້ນອາສະວະທັງຫຼາຍຈິງ
ພຣະອົງບໍ່ຊົງເກີດອີກຈິງ

[໑໖໔] (ເຫມະວະຕະຍັກກ່າວຊື່ນຊົມສາຕາຄິຣະຍັກດັ່ງນີ້)
ທ່ານໄດ້ສັນເສີນພຣະຫະໄທຂອງພຣະມຸນີໂຄດົມ
ທີ່ເຖິງພ້ອມດ້ວຍກາຍຍະກຳ ວະຈີກຳ ແລະມະໂນກຳ
ແລະສັນເສີນພຣະມຸນີໂຄດົມນັ້ນ
ຜູ້ເຖິງພ້ອມດ້ວຍວິດຊາແລະຈະຣະນະ ໂດຍທຳ

[໑໖໕] (ສາຕາຄິຣະຍັກກ່າວຊື່ນຊົມເຫມະວະຕະຍັກດັ່ງນີ້)
ທ່ານກໍຊື່ນຊົມພຣະຫະໄທຂອງພຣະມຸນີໂຄດົມ
ທີ່ເຖິງພ້ອມດ້ວຍກາຍຍະກຳ ວະຈີກຳ ແລະມະໂນກຳ
ແລະຊື່ນຊົມພຣະມຸນີໂຄດົມນັ້ນ
ຜູ້ເຖິງພ້ອມດ້ວຍວິດຊາແລະຈະຣະນະ ໂດຍທຳ

[໑໖໖] ພຣະຫະໄທຂອງພຣະມຸນີໂຄດົມ
ເຖິງພ້ອມດ້ວຍກາຍຍະກຳ ວະຈີກຳ ແລະມະໂນກຳ
ເຮົາໄປເຝົ້າພຣະໂຄດົມຜູ້ເຖິງພ້ອມດ້ວຍວິດຊາແລະຈະຣະນະກັນເທີ້ນ

[໑໖໗] (ເຫມະວະຕະຍັກກ່າວດັ່ງນີ້)
ມາເທີ້ນ ເຮົາທັງສອງຈະໄປເຝົ້າພຣະໂຄດົມ
ຜູ້ມີພຣະຊົງດັ່ງລຳແຂ່ງໂຕຊາຍ
ມີພຣະວໍຣະກາຍງາມຣະຫົງ ມີລັກສະນະອົງອາດ
ສະເຫວີຍພຣະກະຍາຫານແຕ່ພໍປະມານ
ຊົງປາສະຈາກຄວາມຕິດພຣະຫະໄທໃນຣົດພຣະກະຍາຫານ
ຊົງເປັນມຸນີຜູ້ເພ່ງພິນິດຢູ່ໃນປ່າ

[໑໖໘] ເຮົາທັງສອງໄປເຝົ້າພຣະໂຄດົມ ຜູ້ສະງ່າຄືຣາດຊະສີ
ສະເດັດຈາຣິກໂດດເດ່ນພຣະອົງດຽວ[໑]
ຊົງເປັນພຣະນາຄະ[໒]
ບໍ່ຊົງຍິນດີໃນກາມທັງຫຼາຍ
ຈະທູນຖາມເຖິງທຳເຄື່ອງພົ້ນຈາກບ້ວງມັດຈຸຣາດ[໓]

[໑໖໙] ເຮົາທັງສອງຈິ່ງທູນຖາມພຣະໂຄດົມຜູ້ຊົງແນະນຳພ່ຳສອນ
ຊົງເຖິງຝັ່ງແຫ່ງທຳທັງປວງ[໔]
ຊົງເປັນຜູ້ຕັດສະຣູ້ ລ່ວງພົ້ນເວນໄພໄດ້ທຸກຢ່າງ

[໑໗໐] (ເຫມະວະຕະຍັກທູນຖາມດັ່ງນີ້)
ເມື່ອອັນໃດເກີດ ສັດໂລກຈິ່ງເກີດ
ສັດໂລກຍິນດີໃນອັນໃດ
ສັດໂລກຍຶດຖືອັນໃດ
ຍ້ອນອັນໃດສັດໂລກຈິ່ງເດືອດຮ້ອນ

[໑໗໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ເມື່ອອາຍະຕະນະ ໖໑ ເກີດ ສັດໂລກຈຶ່ງເກີດ
ສັດໂລກຍ່ອມຍິນດີໃນອາຍະຕະນະ ໖
ສັດໂລກຍຶດຖືອາຍະຕະນະ ໖ ນັ້ນແລ
ຍ້ອນອາຍະຕະນະ ໖ ສັດໂລກຈຶ່ງເດືອດຮ້ອນ

[໑໗໒] (ເຫມະວະຕະຍັກທູນຖາມດັ່ງນີ້)
ຄວາມຍຶດຖືທີ່ເຮັດໃຫ້ສັດໂລກເດືອດຮ້ອນນັ້ນຄືອັນໃດ
ຂ້າພຣະອົງທູນຖາມແລ້ວ
ຂໍພຣະອົງໂຜດຕັດບອກທຳເຄື່ອງນຳອອກຈາກໂລກ
ສັດໂລກຈະພົ້ນຈາກທຸກໄດ້ແນວໃດ

[໑໗໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ກາມມະຄຸນ ໕ ອັນມີໃຈເປັນທີ ໖ ເຊິ່ງມີຢູ່ໃນໂລກ
ເຮົາປະກາດໄວ້ຊັດເຈນແລ້ວ
ສັດໂລກຄາຍຄວາມພໍໃຈໃນກາມມະຄຸນ ໕ ນີ້ໄດ້
ຍ່ອມພົ້ນຈາກທຸກໄດ້ ດ້ວຍວິທີດັ່ງກ່າວນີ້໒

[໑໗໔] ນີ້ຄືທຳເຄື່ອງນຳອອກຈາກໂລກ
ເຮົາບອກແກ່ພວກທ່ານຕາມຄວາມເປັນຈິງ
ເຮົາກໍບອກພວກທ່ານເຊັ່ນນີ້ແລ
ຍ້ອນວ່າສັດໂລກຍ່ອມພົ້ນຈາກທຸກໄດ້ກໍດ້ວຍວິທີດັ່ງນີ້

[໑໗໕] (ເຫມະວະຕະຍັກທູນຖາມດັ່ງນີ້)
ໃນໂລກນີ້ໃຜນໍຂ້າມໂອຄະ໑ໄດ້
ໃຜນໍຂ້າມຫ້ວງມະຫັນນົບໄດ້໒
ໃຜນໍບໍ່ຈົມລົງໃນຫ້ວງມະຫັນນົບບ່ອນວັງເລິກ
ປາສະຈາກເກາະແກ່ງ ແລະເຄື່ອງຍຶດໜ່ຽວ

[໑໗໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຜູ້ສົມບູນດ້ວຍສິນ ມີປັນຍາ ມີຈິດຕັ້ງໝັ້ນດີແລ້ວ
ເພ່ງພິນິດທຳພາຍໃນ ມີສະຕິທຸກເມື່ອ
ຍ່ອມຂ້າມພົ້ນໂອຄະທີ່ຂ້າມໄດ້ຍາກ

[໑໗໗] ຜູ້ນັ້ນເວັ້ນຂາດຈາກການສັນຍາ^໑ໄດ້ແລ້ວ
ເປັນຜູ້ລະສັງໂຍດໄດ້ທຸກຢ່າງ
ໝົດສິ້ນຄວາມເພີດເພີນແລະພົບແລ້ວ
ຍ່ອມບໍ່ຈົມລົງໃນຫ້ວງມະຫັນນົບບ່ອນວັງເລິກ

[໑໗໘] (ເຫມະວະຕະຍັກກ່າວດັ່ງນີ້)
ທ່ານທັງຫຼາຍໂຜດມາເບິ່ງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ມີພຣະປັນຍາເລິກເຊິ່ງ ຊົງສະແດງເນື້ອຄວາມທີ່ລະອຽດ
ບໍ່ມີກິເລດເຄື່ອງກັງວົນ ບໍ່ຊົງຂ້ອງໃນການມະພົບ
ຊົງລຸດພົ້ນໄດ້ເດັດຂາດໃນອາລົມທັງປວງ
ສະແຫວງຫາຄຸນອັນຍິ່ງໃຫຍ່ ສະເດັດດຳເນີນຢູ່ໃນປະຕິປະທາອັນເປັນທິບ

[໑໗໙] ທ່ານທັງຫຼາຍໂຜດມາເບິ່ງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ມີພຣະນາມເລື່ອງລືໄກ ຊົງສະແດງເນື້ອຄວາມທີ່ລະອຽດ
ຊົງປະທານແສງສະຫວ່າງຄືປັນຍາ ບໍ່ຊົງຕິດຂ້ອງອາໄລ^໑ໃນການ
ຊົງເປັນພຣະສັບພັນຍູຮູ້ທຳທັງປວງ
ມີພຣະປັນຍາປາຣະມີ ສະແຫວງຫາຄຸນອັນຍິ່ງໃຫຍ່
ສະເດັດດຳເນີນຢູ່ໃນປະຕິປະທາຂອງພຣະອະຣິຍະ

[໑໘໐] ມື້ນີ້ເຮົາທັງຫຼາຍເຫັນດີແລ້ວ
ສະຫວ່າງສະໄຫວແລ້ວ ຕັ້ງໝັ້ນດີແລ້ວ
ຍ້ອນເຮົາທັງຫຼາຍໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ຜູ້ຂ້າມພົ້ນໂອຄະ ຜູ້ປາສະຈາກອາສະວະ

[໑໘໑] ຍັກ ໑,໐໐໐ ຕົນທີ່ຢູ່ ບ່ອນນັ້ນທັງໝົດ ມີລິດ ມີຍົດ
ຍ່ອມເຖິງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນສະຣະນະ
ໂດຍເປ່ງວາຈາວ່າພຣະອົງຊົງເປັນພຣະສາດສະດາຜູ້ປະເສີດ
ບໍ່ມີໃຜຍິ່ງກວ່າຂອງຂ້າພຣະອົງທັງຫຼາຍ

[໑໘໒] ຂ້າພຣະອົງທັງຫຼາຍ ຈະຂໍນອບນ້ອມແດ່ພຣະສຳມາສຳພຸດທະເຈົ້າ
ພຣະທຳທີ່ພຣະອົງຕັດໄວ້ດີແລ້ວ
ແລະພຣະສົງຜູ້ປະຕິບັດດີແລ້ວ
ທ່ຽວປະກາດທຳໄປທຸກທົ່ນທຸກແຫ່ງ
ຕາມໝູ່ບ້ານຫຼືຕາມຂຸນເຂົາລຳເນົາໄພ

**ເຫມະວະຕະສູດທີ ໙ ຈົບ**

## ໑໐. ອາລະວະກະສູດ
## ວ່າດ້ວຍອາລະວະກະຍັກທູນຖາມບັນຫາ

ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ບ່ອນຢູ່ຂອງອາລະວະກະຍັກ ເຂດເມືອງອາລະວີ ຄັ້ງນັ້ນ ອາລະວະກະຍັກໄດ້ເຂົ້າໄປຫາພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ກ່າວດັ່ງນີ້ວ່າ ຈົ່ງອອກໄປ ສະມະນະ ພຣະຜູ້ມີພຣະພາກເຈົ້າຊົງຮັບຄຳວ່າ ໄດ້ທ່ານ ແລ້ວສະເດັດອອກໄປ ອາລະວະກະຍັກ ກ່າວອີກວ່າ ຈົ່ງເຂົ້າມາ ສະມະນະ ພຣະຜູ້ມີພຣະພາກເຈົ້າຊົງຮັບຄຳອີກວ່າ ໄດ້ທ່ານ ແລ້ວສະເດັດເຂົ້າໄປ

ແມ່ນເທື່ອທີ ໒ ອາລະວະກະຍັກໄດ້ກ່າວກັບພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຈົ່ງອອກໄປ ສະມະນະ ພຣະຜູ້ມີພຣະພາກເຈົ້າຊົງຮັບຄຳວ່າ ໄດ້ທ່ານ ແລ້ວສະເດັດອອກໄປ ອາລະວະກະຍັກ ກ່າວອີກວ່າ ຈົ່ງເຂົ້າມາ ສະມະນະ ພຣະຜູ້ມີພຣະພາກເຈົ້າຊົງຮັບຄຳອີກວ່າ ໄດ້ທ່ານ ແລ້ວສະເດັດເຂົ້າໄປ

ແມ່ນເທື່ອທີ ໓ ອາລະວະກະຍັກໄດ້ກ່າວກັບພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຈົ່ງອອກໄປ ສະມະນະ ພຣະຜູ້ມີພຣະພາກເຈົ້າຊົງຮັບຄຳວ່າ ໄດ້ທ່ານ ແລ້ວສະເດັດອອກໄປ ອາລະວະກະຍັກ ກ່າວອີກວ່າ ຈົ່ງເຂົ້າມາ ສະມະນະ ພຣະຜູ້ມີພຣະພາກເຈົ້າຊົງຮັບຄຳອີກວ່າ ໄດ້ທ່ານ ແລ້ວສະເດັດເຂົ້າໄປ

ແມ່ນເທື່ອທີ່ ໔ ອາລະວະກະຍັກໄດ້ກ່າວກັບພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຈົ່ງອອກໄປ ສະມະນະ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເຮົາຈະບໍ່ອອກໄປອີກແລ້ວ ທ່ານຈະເຮັດຫຍັງກໍເຊີນເທີ້ນ

ອາລະວະກະຍັກກ່າວວ່າ ສະມະນະ ຂ້າພະເຈົ້າຈະຂໍຕັ້ງບັນຫາຖາມທ່ານ ຖ້າທ່ານຕອບຂ້າພະເຈົ້າບໍ່ໄດ້ ຂ້າພະເຈົ້າຈະຄວັກດວງຈິດຂອງທ່ານອອກໂຍນຖິ້ມສາ ຈະຍ່ອງຫົວໃຈທ່ານໃຫ້ແຫຼກສະຫຼາຍ ບໍກໍຈະຈັບຕີນທັງສອງຂອງທ່ານຄວ່າງໄປຕົກທີ່ຝັ່ງແມ່ນ້ຳຄົງຄາຟາກນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຍັກເອີຍ ເຮົາຍັງບໍ່ເຫັນໃຜຈັກຄົນເລີຍໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະ ມະນຸດຜູ້ຈະສາມາດຄວັກດວງຈິດຂອງເຮົາອອກໂຍນຖິ້ມ ຈະຍ່ອງຫົວໃຈເຮົາໃຫ້ແຫຼສະຫຼາຍ ບໍກໍຈະຈັບຕີນທັງສອງຂອງເຮົາຄວ່າງໄປຕົກທີ່ຝັ່ງແມ່ນ້ຳຄົງຄາຟາກນັ້ນໄດ້ ຖ້າຈັ່ງຊັ້ນແລ້ວເຊີນທ່ານຖາມບັນຫາຕາມທີ່ທ່ານສົງໄສເທີ້ນ

ລຳດັບນັ້ນ ອາລະວະກະຍັກໄດ້ທູນຖາມບັນຫາກັບພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

[໑໘໓] ອັນໃດນໍເປັນຊັບເຄື່ອງພໍໃຈທີ່ປະເສີດສຸດຂອງຄົນໃນໂລກນີ້
ອັນໃດນໍທີ່ບຸກຄົນປະພຶດດີແລ້ວນຳຄວາມສຸກມາໃຫ້
ອັນໃດນໍເປັນຣົດທີ່ດີກວ່າຣົດທັງຫຼາຍ
ບຸກຄົນມີຄວາມເປັນຢູ່ແນວໃດ ນັກປາດຈຶ່ງກ່າວວ່າມີຊີວິດປະເສີດ

[໑໘໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ສັດທາເປັນຊັບເຄື່ອງພໍໃຈທີ່ປະເສີດສຸດຂອງຄົນໃນໂລກນີ້
ທຳ[໑]ທີ່ບຸກຄົນປະພຶດດີແລ້ວນຳຄວາມສຸກມາໃຫ້
ສັດຈະທໍ່ນັ້ນ ເປັນຣົດທີ່ດີກວ່າຣົດທັງຫຼາຍ
ບຸກຄົນມີຄວາມເປັນຢູ່ດ້ວຍປັນຍາ[໒]
ນັກປາດຈຶ່ງກ່າວວ່າມີຊີວິດປະເສີດ[໓]

[໑໘໕] (ອາລະວະກະຍັກຖາມດັ່ງນີ້)
ຄົນຈະຂ້າມໂອຄະໄດ້ແນວໃດ
ຈະຂ້າມຫ້ວງມະຫັນນົບໄດ້ແນວໃດ
ຈະລ່ວງພົ້ນທຸກໄດ້ແນວໃດ
ແລະຈະບໍລິສຸດໄດ້ແນວໃດ

[໑໘໖] (ພຣະຜູ້ພຣະພາກຕັດຕອບດັ່ງນີ້)
ຄົນຈະຂ້າມໂອຄະໄດ້ດ້ວຍສັດທາ
ຈະຂ້າມຫ້ວງມະຫັນນົບໄດ້ດ້ວຍຄວາມບໍ່ຜະໝາດ
ຈະລ່ວງພົ້ນທຸກໄດ້ດ້ວຍຄວາມພຽນ
ແລະຈະບໍລິສຸດໄດ້ດ້ວຍປັນຍາ

[໑໘໗] (ອາລະວະກະຍັກຖາມດັ່ງນີ້)
ຄົນເຮັດແນວໃດຈຶ່ງຈະໄດ້ປັນຍາ
ເຮັດແນວໃດຈຶ່ງຈະໄດ້ຊັບ
ເຮັດແນວໃດຈຶ່ງຈະໄດ້ກຽດ
ເຮັດແນວໃດຈຶ່ງຈະມັດໃຈໝູ່ມິດໄວ້ໄດ້
ແລະເຮັດແນວໃດເມື່ອຕາຍແລ້ວຈະບໍ່ເສົ້າໂສກ

[໑໘໘] (ພຣະຜູ້ພຣະພາກຕັດຕອບດັ່ງນີ້)

ຄົນຕ້ອງການບັນລຸນິບພານ
ເຊື່ອຟັງຄຳສັ່ງສອນຂອງພຣະອະຣະຫັນ
ບໍ່ພະໝາດ ຮູ້ຈັກພິນິດພິຈາລະນາ
ຕັ້ງໃຈຟັງດ້ວຍດີ ຍ່ອມໄດ້ປັນຍາ

[໑໗໙] ຄົນປະຕິບັດຕົນກົງຕໍ່ເວລາ ເອົາທຸລະ
ມີຄວາມດຸໝັ່ນຍ່ອມຫາຊັບໄດ້
ຍ່ອມໄດ້ກຽດດ້ວຍຄວາມສັດຈິງ
ຜູ້ໃຫ້ຍ່ອມມັດໃຈໝູ່ມິດໄວ້ໄດ້

[໑໘໐] ຄົນຜູ້ຢູ່ຄອງເຮືອນ ມີສັດທາ
ປະພຶດທຳ ໔ ປະການນີ້ຄື
ສັດຈະ ທຳມະ ທິຕິ ແລະຈາຄະ
ຕາຍແລ້ວຍ່ອມບໍ່ເສົ້າໂສກ

[໑໘໑] ເຊີນທ່ານຖາມສະມະນະພາມເຫຼົ່າອື່ນເບິ່ງເທີ້ນວ່າ
ໃນໂລກນີ້ ເຫດໃຫ້ໄດ້ກຽດທີ່ຍິ່ງໄປກວ່າສັດຈະກໍດີ
ເຫດໃຫ້ມີປັນຍາທີ່ຍິ່ງໄປກວ່າທະມະ⁹ກໍດີ
ເຫດໃຫ້ມັດມິດສະຫາຍໄວ້ໄດ້ທີ່ຍິ່ງໄປກວ່າຈາຄະກໍດີ
ເຫດໃຫ້ຫາຊັບໄດ້ທີ່ຍິ່ງໄປກວ່າຂັນຕິ¹⁰ກໍດີ ມີຢູ່ບໍ

[໑໘໒] (ອາລະວະກະຍັກຂາບທູນດັ່ງນີ້)
ມື້ນີ້ ຂ້າພຣະອົງໄດ້ຮູ້ແຈ້ງເຖິງປະໂຫຍດທີ່ຈະເພິ່ງໄດ້ໃນໂລກໜ້າແລ້ວ
ຍັງຕ້ອງຖາມສະມະນະພາມເຫຼົ່າອື່ນອີກເຮັດຫຍັງ

[໑໘໓] ພຣະພຸດທະເຈົ້າສະເດັດມາປະທັບທີ່ເມືອງອາລະວີ
ເພື່ອປະໂຫຍດແກ່ຂ້າພຣະອົງໂດຍແທ້
ໃນມື້ນີ້ຂ້າພຣະອົງໄດ້ຮູ້ແຈ້ງເຖິງບຸກຄົນ
ທີ່ໃຜ ໆ ຖວາຍທານແລ້ວມີຜົນຫຼາຍ

[໑໘໔] ຂ້າພຣະອົງນັ້ນຂໍນອບນ້ອມແດ່ພຣະສຳມາສຳພຸດທະເຈົ້າ
ພຣະທຳທີ່ພຣະອົງຕັດໄວ້ດີແລ້ວ
ແລະພຣະສົງຜູ້ປະຕິບັດດີແລ້ວ
ທ່ຽວປະກາດທຳໄປທຸກຫົນທຸກແຫ່ງ

ຕາມໝູ່ບ້ານຫຼືຕາມຫົວເມືອງນ້ອຍໃຫຍ່

**ອາລະວະກະສູດທີ ໑໐ ຈົບ**

## ໑໑. ວິຊະຍະສູດ

### ວ່າດ້ວຍການພິຈາລະນາເອົາຊະນະຄວາມສວຍງາມຂອງຮ່າງກາຍ

(ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)

[໑໙໕] ການທີ່ຄົນເຮົາຢືນ ຍ່າງ ນັ່ງ ຫຼືນອນ
ຄູ້ເຂົ້າຫຼືຢຽດອອກ
ນີ້ຈັດເປັນຄວາມເຄື່ອນໄຫວຂອງຮ່າງກາຍ

[໑໙໖] ຮ່າງກາຍນີ້ປະກອບດ້ວຍກະດູກແລະເສັ້ນເອັນ[១]
ມີໜັງແລະຊີ້ນສາບທາ ຫໍ່ຫຸ້ມດ້ວຍຜິວໜັງ
ປຸຖຸຊົນຍ່ອມບໍ່ພິຈາລະນາເຫັນຕາມຄວາມເປັນຈິງ

[໑໙໗] ຮ່າງກາຍນີ້ເຕັມໄປນຳລຳໄສ້ໃຫຍ່ ລຳໄສ້ນ້ອຍ
ອາຫານໃໝ່ ອາຫານເກົ່າ
ຕັບ ມູດ ຫົວໃຈ ປອດ ໄຕ ມ້າມ

[໑໙໘] ນ້ຳມູກ ນ້ຳລາຍ ເຫື່ອ ມັນຂຸ້ນ ເລືອດ ໄຂຂໍ້ ບີ ນ້ຳມັນ

[໑໙໙] ອັນໜຶ່ງ ຮ່າງກາຍນີ້ມີຂອງບໍ່ສະອາດ
ໄຫຼອອກທາງທະວານທັງ ໙ ສະເໝີ ຄື
ມີຂີ້ຕາໄຫຼອອກທາງເບົ້າຕາ ມີຂີ້ຫູໄຫຼອອກທາງຮູຫູ

[໔໐໐] ມີນ້ຳມູກໄຫຼອອກຈາກທາງຮູດັງ
ບາງເວລາກໍຮາກ ຄາຍນ້ຳບີ ຂາກສະເລດອອກທາງປາກ
ມີເມັດເຫື່ອອອກຕາມຂຸມຂົນ ມີໜອງຝີໄຫຼອອກກິ່ງທີ່ເປັນບາດ

[໔໐໑] ອັນໜຶ່ງ ຮ່າງກາຍນີ້ມີຫົວເປັນໂພ້ງ ເຕັມດ້ວຍມັນສະໝອງ
ເຊິ່ງຄົນພານຖືກອະວິດຊາຄອບງຳ ຫຼົງເຂົ້າໃຈວ່າເປັນຂອງສວຍງາມ

[໔໐໒] ແລະເມື່ອຮ່າງກາຍນັ້ນຕາຍ ໄຄ່ເບັງ ມີສີຂຽວແຫຼ້

ຖືກຖິ້ມໃຫ້ນອນຢູ່ໃນປ່າຊ້າ ໝູ່ຍາດຕ່າງໝົດຄວາມອາໄລໄຍດີ

[໒໐໓] ຮ່າງກາຍທີ່ເປື່ອຍເນົ່ານັ້ນ ໝາບ້ານ ໝາຈອກ ໝາປ່າ ໝູ່ໜອນ ຝູງກາ ຝູງແຮ້ງແລະສັດທີ່ກິນຊາກສົບອື່ນ ໆ ຍ່ອມຫຸ້ມຍາດແຍ່ງກັນກິນ

[໒໐໔] ພິກຂຸໃນທຳວິໄນນີ້ ຟັງພຸດທະພົດແລ້ວເກີດປັນຍາ ຍ່ອມກຳນົດຮູ້ແລະພິຈາລະນາເຫັນຮ່າງກາຍນັ້ນ ຕາມຄວາມເປັນຈິງແນວນັ້ນ

[໒໐໕] ຮ່າງກາຍທີ່ຕາຍແລ້ວນັ້ນໄດ້ເຄີຍເປັນຄືຮ່າງກາຍທີ່ມີຊີວິດນີ້ ແລະຮ່າງກາຍທີ່ມີຊີວິດນີ້ກໍຈະເປັນຄືຮ່າງກາຍທີ່ຕາຍແລ້ວນັ້ນ ພິກຂຸຈຶ່ງຄວນຄາຍຄວາມຍິນດີພໍໃຈໃນຮ່າງກາຍ ທັງພາຍໃນແລະພາຍນອກ

[໒໐໖] ພິກຂຸໃນທຳວິໄນນີ້ ມີປັນຍາ ບໍ່ຍິນດີດ້ວຍສັນທະຣາຄະ ໄດ້ບັນລຸນິບພານທີ່ເປັນອະມະຕະອັນສະງົບ ດັບ ແລະບໍ່ຈຸຕິ

[໒໐໗] ຮ່າງກາຍນີ້ ມີ ໒ ຕີນ ບໍ່ສະອາດ ມີກິ່ນເໝັນ ເຕັມໄປດ້ວຍຊາກສົບຕ່າງ ໆ ຂັບຖ່າຍຂອງບໍ່ສະອາດ ມີນ້ຳລາຍນ້ຳມູກເປັນຕົ້ນອອກທາງທະວານທັງ ໙ ຂັບເຫື່ອໄຄໃຫ້ໄຫຼອອກທາງຮູຂຸມຂົນນັ້ນ ໆ ຕ້ອງບຳລຸງຮັກສາຢູ່ສະເໝີ

[໒໐໘] ດ້ວຍຮ່າງກາຍທີ່ມີສະພາບແນວນີ້ ການທີ່ບຸກຄົນຫຼົງເຂົ້າໃຈຜິດຄິດເຂົ້າຂ້າງຕົນເອງ ແລະດູໝິ່ນຜູ້ອື່ນນັ້ນ ຈະມີປະໂຫຍດອັນໃດ ນອກຈາກການບໍ່ເຫັນອະຣິຍະສັດ

**ວິຊະຍະສູດທີ ໑໑ ຈົບ**

# ໑໘. ມຸນິສູດ

## ວ່າດ້ວຍລັກສະນະຂອງມຸນີ

(ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)

[໘໐໗] ໄພເກີດຈາກຄວາມເຊີຍຊິດ[1]
ທຸລີຄືຣາຄະ ໂທສະ ແລະໂມຫະ
ເກີດຈາກອາລົມອັນເປັນບ່ອນຕັ້ງແຫ່ງກິເລດ
ຄວາມບໍ່ມີກິເລດ ບໍ່ມີຄວາມເຊີຍຊິດ
ນັ້ນແລ ເປັນລັກສະນະຂອງມຸນີ

[໘໑໐] ບັນດິດທັງຫຼາຍຮຽກຜູ້ທີ່ຕັດກິເລດທີ່ເກີດຂຶ້ນໄດ້
ບໍ່ປຸກກິເລດໃຫ້ເກີດຂຶ້ນອີກ
ເມື່ອກິເລດເກີດຂຶ້ນກໍບໍ່ເພິ່ງໃຫ້ໄຫຼເຂົ້າອີກ
ວ່າ ເປັນມຸນີຜູ້ທ່ຽວໄປຢູ່
ພຣະມຸນີນັ້ນຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ຊົງເຫັນສັນຕິບົດແຈ່ມແຈ້ງແລ້ວ

[໘໑໑] ຜູ້ກຳນົດຮູ້ບ່ອນຕັ້ງແຫ່ງກິເລດ[1] ກຳຈັດພືດ[2]ໄດ້ເດັດຂາດ
ບໍ່ໃຫ້ຢາງພືດໄຫຼເຂົ້າໄປໄດ້ອີກ
ຊື່ວ່າ ເປັນມຸນີຜູ້ມີປົກກະຕິເຫັນພາວະທີ່ສິ້ນສຸດການເກີດ
ລະອະກຸສົນວິຕົກໄດ້ ຈຶ່ງບໍ່ເຖິງການນັບອີກຕໍ່ໄປ

[໘໑໒] ຜູ້ຮູ້ແຈ້ງພົບເປັນບ່ອນອາໄສຢູ່ທັງໝົດ
ບໍ່ປາຖະໜາພົບເຫຼົ່ານັ້ນແມ່ນແຕ່ພົບດຽວ
ຊື່ວ່າ ເປັນມຸນີຜູ້ປາສະຈາກຄວາມຢຶດຕິດ[3] ບໍ່ມີຄວາມຢຶດໝັ້ນ
ຍ່ອມບໍ່ກໍ່ກຳໃດ ໆ ອີກ ຍ້ອນເປັນຜູ້ເຖິງຝັ່ງແລ້ວ

[໘໑໓] ຜູ້ຄອບງຳທຳທັງປວງ ຮູ້ທຳທັງປວງ ມີປັນຍາ
ບໍ່ໄດ້ເປິເປື້ອນໃນທຳທັງປວງ ລະທຳທັງປວງໄດ້
ລຸດພົ້ນຍ້ອນສິ້ນຕັນຫາ
ນັກປາດທັງຫຼາຍປະກາດວ່າ ເປັນມຸນີ

[໔໑໔] ຜູ້ມີກຳລັງຄືປັນຍາ ເຖິງພ້ອມດ້ວຍສີນແລະຂໍ້ວັດປະຕິບັດ໔
ມີຈິດຕັ້ງໝັ້ນ ຍິນດີໃນຊານ ມີສະຕິ
ລຸດພົ້ນຈາກກິເລດເຄື່ອງຂ້ອງແລ້ວ
ບໍ່ມີກິເລດຄືຕະປູຕຶງໃຈ ປາສະຈາກອາສະວະ
ນັກປາດທັງຫຼາຍປະກາດວ່າ ເປັນມຸນີ

[໔໑໕] ຜູ້ທ່ຽວໄປຜູ້ດຽວ ມີປັນຍາ ບໍ່ຜະໝາດ
ບໍ່ຫວັ່ນໄຫວຍ້ອນນິນທາແລະສັນເສີນ
ບໍ່ສະດຸ້ງຍ້ອນສຽງ ຄືຣາດຊະສີ
ບໍ່ຕິດຕາໜ່າງ໑ ຄືລົມ
ບໍ່ປຽກນ້ຳ ຄືບົວ
ເປັນຜູ້ແນະນຳຜູ້ອື່ນ ບໍ່ແມ່ນຜູ້ອື່ນແນະນຳ
ນັກປາດທັງຫຼາຍປະກາດວ່າ ເປັນມຸນີ

[໔໑໖] ຜູ້ບໍ່ຍິນດີຍິນຮ້າຍຄຳສັນເສີນຫຼືນິນທາຂອງຄົນອື່ນ
ຄືເສົາທີ່ເຂົາຝັງປັກໄວ້ທີ່ທ່ານ້ຳ
ປາສະຈາກຣາຄະ ມີອິນຊີຕັ້ງໝັ້ນດີແລ້ວ
ນັກປາດທັງຫຼາຍປະກາດວ່າ ເປັນມຸນີ

[໔໑໗] ຜູ້ຕັ້ງຕົນໄວ້ຖືກຕ້ອງ ຊື່ກົງຄືກະສວຍ໒
ລັງກຽດບາບກຳທັງຫຼາຍ
ພິຈາລະນາເຫັນກຳທີ່ສະເໝີແລະບໍ່ສະເໝີ
ນັກປາດທັງຫຼາຍປະກາດວ່າ ເປັນມຸນີ

[໔໑໘] ຜູ້ຍັງຢູ່ໃນໄວໜຸ່ມ ໄວສາວ ຫຼືໄວກາງຄົນ
ສັງລວມຕົນແລ້ວ ບໍ່ເຮັດບາບ
ເປັນມຸນີ ມີຈິດຫ່າງຈາກບາບ
ບໍ່ຄຽດງ່າຍ ບໍ່ວ່າຮ້າຍໃຜ ໆ
ນັກປາດທັງຫຼາຍປະກາດວ່າ ເປັນມຸນີ

[໔໑໙] ຜູ້ດຳລົງຊີວິດຢູ່ດ້ວຍອາຫານທີ່ຜູ້ອື່ນໃຫ້
ໄດ້ອາຫານດີເລີດ ກໍບໍ່ກ່າວປະຈົບຍ້ອງຍໍຜູ້ໃຫ້
ໄດ້ອາຫານປານກາງຫຼືຊົ່ວກໍບໍ່ຕິຕຽນເຂົາໃຫ້ເສຍນ້ຳໃຈ
ນັກປາດທັງຫຼາຍປະກາດວ່າ ເປັນມຸນີ

[໒໒໐] ຜູ້ມີປັນຍາ ທ່ຽວໄປຢູ່ຜູ້ດຽວ
ມີຈິດເວັ້ນຂາດຈາກເມຖຸນທຳຄື
ບໍ່ມັດຈິດຮັກແພງໃນຍິງສາວເລີຍແມ່ນແຕ່ຄົນດຽວ
ເວັ້ນຂາດຈາກຄວາມມົວເມົາ ຜະໝາດ ເປັນຜູ້ລຸດພົ້ນແລ້ວ
ນັກປາດທັງຫຼາຍປະກາດວ່າ ເປັນມຸນີ

[໒໒໑] ຜູ້ຮູ້ແຈ້ງໂລກ[໑] ເຫັນປະຣະມັດຖະທຳ[໒]
ຂ້າມໂອຄະ ແລະສະມຸດ[໓]ໄດ້
ເປັນຜູ້ໝັ້ນຄົງ ຕັດກິເລດເຄື່ອງຮ້ອຍຮັດໄດ້ເດັດຂາດ
ບໍ່ມີຕັນຫາແລະທິດຖິອາໄສ ປາສະຈາກອາສະວະ
ນັກປາດທັງຫຼາຍປະກາດວ່າ ເປັນມຸນີ

[໒໒໒] ຄະລືຫັດແລະບັນພະຊິດ ໒ ຈຳພວກນີ້
ມີບ່ອນຢູ່ແລະການດຳລົງຊີວິດຫ່າງໄກກັນ ຄື
ຄະລືຫັດທຳງານລ້ຽງບຸດພັນລະຍາ
ສ່ວນບັນພະຊິດບໍ່ຍຶດຖືສິ່ງຕ່າງ ໆ ວ່າເປັນຂອງຕົນ ມີຂໍ້ວັດປະຕິບັດງາມ
ຄະລືຫັດບໍ່ສັງລວມ ຍ້ອນບຽດບຽນສັດອື່ນ
ສ່ວນບັນພະຊິດທີ່ຊື່ວ່າເປັນມຸນີ ສັງລວມເປັນປະຈຳ
ຮັກສາສັດມີຊີວິດໄວ້

[໒໒໓] ພິກຂຸເປັນມຸນີ ເປັນຜູ້ສະງົບ ເພ່ງພິນິດຢູ່ໃນປ່າ
ຄະລືຫັດຈະເຮັດເອົາຢ່າງທ່ານບໍ່ໄດ້
ຄືນົກຍູງມີສ້ອຍຄໍສີຂຽວ ເຖິງຈະບິນໄປໃນອາກາດໄດ້
ກໍຍັງສູ້ຄວາມໄວຂອງຫົງບໍ່ໄດ້ຕະຫຼອດການ ສັນນັ້ນ

**ມຸນີສູດທີ ໑໒ ຈົບ**

**ອຸຣະຄະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອຸຣະຄະສູດ
໒. ທະນິຍະສູດ
໓. ຂັກຄະວິສານະສູດ
໔. ກະສິພາຣະທະວາຊະສູດ
໕. ຈຸນທະສູດ
໖. ປາພະວະສູດ
໗. ວະສະລະສູດ
໘. ເມດຕະສູດ
໙. ເຫມະວະຕະສູດ
໑໐. ອາລະວະກະສູດ
໑໑. ວິຊະຍະສູດ
໑໒. ມຸນີສູດ

# ໘. ຈູລະວັກ

## ໝວດວ່າດ້ວຍເລື້ອງເລັກໜ້ອຍ

## ໑. ຣະຕະນະສູດ[1]

### ວ່າດ້ວຍຣັດຕະນະ

(ພຣະຜູ້ມີພຣະພາກເຈົ້າຕັດຣະຕະນະສູດດັ່ງນີ້)

[໘໘໔] ພູດທັງຫຼາຍຜູ້ສິງສະຖິດຢູ່ເທິງພາກາພື້ນ
ຫຼືຜູ້ສິງສະຖິດຢູ່ໃນອາກາດ ທີ່ມາປະຊຸມກັນຢູ່ ບ່ອນນີ້
ຂໍໃຫ້ພູດທັງປວງຈົ່ງເປັນຜູ້ມີໃຈດີ ແລະຈົ່ງຟັງພາສິດໂດຍເຄົາລົບເທີ້ນ

[໘໘໕] ຍ້ອນແນວນັ້ນແລ ພູດທັງປວງ ທ່ານຈົ່ງພິຈາຣະນາ
ຈົ່ງແຜ່ເມດຕາຕໍ່ໝູ່ມະນຸດດ້ວຍເທີ້ນ
ມະນຸດເຫຼົ່າໃດນຳເຄື່ອງເຊ່ນສວງມາໃຫ້
ທັງກາງເວັນແລະກາງຄືນ
ຍ້ອນເຫດນັ້ນ ຂໍທ່ານທັງຫຼາຍຢ່າຜະໝາດ
ຈົ່ງຮັກສາມະນຸດເຫຼົ່ານັ້ນ

[໘໘໖] ຊັບເຄື່ອງພໍໃຈ ຫຼືຣັດຕະນະຊາດທີ່ປະນີດໃດ ໆ
ທີ່ມີໃນໂລກນີ້ ໃນໂລກອື່ນ ຫຼືໃນສະຫວັນ
ຊັບຫຼືຣັດຕະນະຊາດນັ້ນ ໆ ທີ່ສະເໝີດ້ວຍຕະຖາຄົດ ບໍ່ມີ
ນີ້ເປັນຣັດຕະນະອັນປະນີດໃນພຣະພຸດທະເຈົ້າ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໘໘໗] ພຣະສາກະຍະມຸນີຜູ້ມີພຣະຫະໄທຕັ້ງໝັ້ນ
ຊົງບັນລຸທຳໃດອັນເປັນທີ່ສິ້ນສຸດກິເລດ
ປາສະຈາກຣາຄະ ເປັນອະມະຕະທຳອັນປະນີດ
ບໍ່ມີທຳໃດ ໆ ທີ່ສະເໝີດ້ວຍທຳນັ້ນ
ນີ້ເປັນຣັດຕະນະອັນປະນີດໃນພຣະທຳ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໔໘໗] ພຣະພຸດທະເຈົ້າຜູ້ປະເສີດ
ຕັດສັນເສີນສະມາທິໃດວ່າເປັນທຳສະອາດ
ຕັດເຖິງສະມາທິໃດວ່າໃຫ້ຜົນໂດຍລຳດັບ
ສະມາທິອື່ນທີ່ສະເໝີດ້ວຍສະມາທິນັ້ນ ບໍ່ມີ
ນີ້ເປັນຣັດຕະນະອັນປະນີດໃນພຣະທຳ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໔໘໙] ບຸກຄົນ ໑໐໘ ຈຳພວກທີ່ສັດຕະບຸຣຸດສັນເສີນ
ເຊິ່ງຈັດເປັນບຸກຄົນ ໔ ຄູ່ ເປັນສາວົກຂອງພຣະສຸຄົດເຈົ້າ
ເປັນຜູ້ຄວນແກ່ທັກຂິນາ
ທານທີ່ເຂົາຖວາຍໃນບຸກຄົນເຫຼົ່ານັ້ນ ມີຜົນຫຼາຍ
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໔໙໐] ບຸກຄົນເຫຼົ່າໃດໃນສາດສະໜາຂອງພຣະໂຄດົມພຸດທະເຈົ້າ
ເປັນຜູ້ປະກອບຕົນໄວ້ດີ ມີໃຈໝັ້ນຄົງ ໝົດຄວາມຫ່ວງໃຍ
ບຸກຄົນເຫຼົ່ານັ້ນຊື່ວ່າບັນລຸອະຣະຫັດຕະຜົນ
ຢັ່ງເຖິງອະມະຕະນິບພານ ຮັບຣົດຄວາມດັບເຢັນແບບໄດ້ເປົ່າ
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໔໙໑] ສັດຕະບຸຣຸດໃດພິຈາລະນາເຫັນແຈ້ງອະຣິຍະສັດ
ເຮົາຮຽກສັດຕະບຸຣຸດນັ້ນວ່າມີອຸປະມາຄືເສົາເຂື່ອນທີ່ຝັງລົງດິນ
ອັນບໍ່ຫວັ່ນໄຫວຍ້ອນລົມທີ່ພັດມາຈາກທິດທັງສີ່
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໔໙໔] ພຣະໂສດາບັນເຫຼົ່າໃດຮູ້ແຈ້ງອະຣິຍະສັດ
ທີ່ພຣະສາດສະດາຜູ້ມີປັນຍາເລິກເຊິ່ງສະແດງແລ້ວ
ເຖິງແມ່ນວ່າພຣະໂສດາບັນເຫຼົ່ານັ້ນຈະຜະໝາດໄປແດ່
ທ່ານເຫຼົ່ານັ້ນກໍຈະບໍ່ຖືກຳເນີດໃນພົບທີ ໘
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໔໓໓] ພຣະໂສດາບັນນັ້ນລະທຳ ໓ ປະການ ຄື
ສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດໄດ້ຢ່າງໝົດສິ້ນ
ພ້ອມກັບການບັນລຸໂສດາປັດຕິມັກ

[໔໓໔] ພຣະໂສດາບັນນັ້ນພົ້ນຈາກອະບາຍທັງສີ່
ແລະຈະບໍ່ເຮັດອະພິຖານ ໖
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໔໓໕] ເຖິງແມ່ນວ່າ ພຣະໂສດາບັນນັ້ນຈະເຮັດບາບກຳ
ທາງກາຍ ທາງວາຈາ ຫຼືທາງໃຈໄປແດ່
ທ່ານກໍບໍ່ປົກປິດບາບກຳນັ້ນໄວ້
ເຮົາກ່າວວ່າຜູ້ເຫັນນິບພານແລ້ວ ບໍ່ອາດເຮັດແນວນັ້ນໄດ້
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໔໓໖] ພຸ່ມໄມ້ງາມໃນປ່າເຊິ່ງມີຍອດອອກດອກບານເດຍລະດາດ
ໃນຕົ້ນເດືອນຫ້າແຫ່ງຄິມຫັນຕະລະດູ ງາມຢ່າງຍິ່ງ ສັນໃດ
ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳອັນປະເສີດ
ທີ່ໃຫ້ເຖິງນິບພານ ເພື່ອປະໂຫຍດຢ່າງຍິ່ງ ສັນນັ້ນ
ນີ້ເປັນຣັດຕະນະອັນປະນີດໃນພຣະພຸດທະເຈົ້າ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໔໓໗] ພຣະພຸດທະເຈົ້າຜູ້ປະເສີດ ຊົງຮູ້ທຳອັນປະເສີດ
ຊົງປະທານທຳອັນປະເສີດ ຊົງນຳທາງອັນປະເສີດມາໃຫ້
ຊົງເປັນຜູ້ປະເສີດກວ່າໃຜ ໆ ໄດ້ຊົງສະແດງທຳອັນປະເສີດໄວ້
ນີ້ເປັນຣັດຕະນະອັນປະນີດໃນພຣະພຸດທະເຈົ້າ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

[໔໓໘] ພຣະຂີນາສົບເຫຼົ່າໃດສິ້ນພົບເກົ່າແລ້ວ ບໍ່ມີການເກີດໃໝ່
ທັງມີຈິດເບື່ອໜ່າຍໃນພົບທີ່ຈະເກີດຕໍ່ໄປ
ທ່ານເຫຼົ່ານັ້ນຊື່ວ່າ ມີພືດໝົດແລ້ວ ບໍ່ມີສັນທະງອກຂຶ້ນ ເປັນນັກປາດ
ຍ່ອມດັບເຢັນຄືປະທີບດວງນີ້ດັບໄປ
ນີ້ເປັນຣັດຕະນະອັນປະນີດໃນພຣະສົງ
ດ້ວຍສັດຈະນີ້ ຂໍໃຫ້ມີຄວາມປອດໄພ

(ທ້າວສັກກະຈອມເທບຂາບທູນດັ່ງນີ້)

[໔໓໙] ພູດທັງຫຼາຍຜູ້ສິງສະຖິດຢູ່ເທິງພາກພື້ນ
ຫຼືຜູ້ສິງສະຖິດຢູ່ໃນອາກາດ ທີ່ມາປະຊຸມກັນຢູ່ ບ່ອນນີ້
ຂ້າພຣະອົງທັງຫຼາຍຂໍນອບນ້ອມແດ່ພຣະຕະຖາຄົດພຸດທະເຈົ້າ
ທີ່ເທວະດາແລະມະນຸດບູຊາແລ້ວ ຂໍໃຫ້ມີຄວາມປອດໄພ

[໔໔໐] ພູດທັງຫຼາຍຜູ້ສິງສະຖິດຢູ່ເທິງພາກພື້ນ
ຫຼືຜູ້ສິງສະຖິດຢູ່ໃນອາກາດ ທີ່ມາປະຊຸມກັນຢູ່ ບ່ອນນີ້
ຂ້າພຣະພຸດທະເຈົ້າທັງຫຼາຍຂໍນອບນ້ອມແດ່ພຣະທຳຂອງພຣະຕະຖາຄົດ
ທີ່ເທວະດາແລະມະນຸດບູຊາແລ້ວ ຂໍໃຫ້ມີຄວາມປອດໄພ

[໔໔໑] ພູດທັງຫຼາຍຜູ້ສິງສະຖິດຢູ່ເທິງພາກພື້ນ
ຫຼືຜູ້ສິງສະຖິດຢູ່ໃນອາກາດ ທີ່ມາປະຊຸມກັນຢູ່ ບ່ອນນີ້
ຂ້າພຣະອົງທັງຫຼາຍຂໍນອບນ້ອມແດ່ພຣະສົງຂອງພຣະຕະຖາຄົດເຈົ້າ
ທີ່ເທວະດາແລະມະນຸດບູຊາແລ້ວ ຂໍໃຫ້ມີຄວາມປອດໄພ

**ຣະຕະນະສູດທີ ໑ ຈົບ**

## ໔. ອາມະຄັນທະສູດ

## ວ່າດ້ວຍສິ່ງທີ່ມີກິ່ນດິບ

[໔໔໔] (ຕິດສະດາບົດທູນຖາມພຣະກັດສະປະສຳມາສຳພຸດທະເຈົ້າດັ່ງນີ້)
ສັດຕະບຸຣຸດທັງຫຼາຍບໍຣິໂພກເຂົ້າຟ່າງ ໝາກເດືອຍ ຖົ່ວຊຽວ
ໃບໄມ້ ເຜືອກມັນ ແລະໝາກໄມ້ທີ່ໄດ້ມາໂດຍຖືກຕ້ອງຕາມທຳ
ເຖິງຕ້ອງການໃນກາມ ກໍບໍ່ກ່າວຄຳເຫຼາະແຫຼະ

[໔໔໓] ຂ້າແດ່ພຣະກັດສະປະສຳມາສຳພຸດທະເຈົ້າ
ພຣະອົງເມື່ອສະເຫວີຍຊີ້ນຊະນິດໃດ
ທີ່ຜູ້ອື່ນປຸງເປັນພິເສດສຳເລັດຮຽບຮ້ອຍແລ້ວ
ຕົບແຕ່ງຢ່າງປະນີດຖວາຍ
ເມື່ອສະເຫວີຍເຂົ້າສາລີທີ່ເຂົາຫຸງສຸກແລ້ວກໍຊື່ວ່າ ສະເຫວີຍກິ່ນດິບ[១]

[໔໔໔] ຂ້າແດ່ພຣະອົງຜູ້ຊົງເປັນເຜົ່າພັນແຫ່ງພຣະພົມ

ພຣະອົງຕັດແນວນີ້ວ່າ ກິນດິບບໍ່ສົມຄວນແກ່ເຮົາ
ແຕ່ຍັງສະເຫວີຍເຂົ້າສາລີທີ່ເຂົາຫຸງສຸກແລ້ວກັບຊີ້ນນົກທີ່ເຂົາປຸງເປັນພິເສດ
ຂ້າແດ່ພຣະກັດສະປະສຳມາສຳພຸດທະເຈົ້າ
ຂ້າພຣະອົງຂໍທູນຖາມຄວາມຂໍ້ນີ້ກັບພຣະອົງ
ກິນດິບຂອງພຣະອົງ ມີຄວາມໝາຍແນວໃດ

[໔໘໕] (ພຣະກັດສະປະສຳມາສຳພຸດທະເຈົ້າຕັດຕອບດັ່ງນີ້)
ການຂ້າສັດ ການທຸບຕີ ການຕັດ ການຄຸມຂັງ
ການລັກເອົາ ການເວົ້າຕົວະ ການເຫັນແກ່ໄດ້ ການຫຼອກລວງ
ການສຶກສາຕຳລາທີ່ຂາດປະໂຫຍດ ແລະການເປັນຊູ້ກັບພັນລະຍາຜູ້ອື່ນ
ນີ້ຕ່າງຫາກ ຊື່ວ່າ ກິນດິບ ບໍ່ແມ່ນອາຫານທີ່ປຸງດ້ວຍຊີ້ນແຕ່ຢ່າງໃດ

[໔໘໖] ໃນໂລກນີ້ ຄົນຜູ້ບໍ່ຄວບຄຸມຕົນໃນກາມທັງຫຼາຍ
ຕິດຢູ່ໃນຣົດຕ່າງ ໆ ເຈືອປົນດ້ວຍຂອງບໍ່ສະອາດ
ມີຄວາມເຫັນວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ
ມີວຽກງານບໍ່ສະເໝີ ວ່າຍາກສອນຍາກ
ນີ້ຕ່າງຫາກ ຊື່ວ່າ ກິນດິບ ບໍ່ແມ່ນອາຫານທີ່ປຸງດ້ວຍຊີ້ນແຕ່ຢ່າງໃດ

[໔໘໗] ພວກຄົນຜູ້ເສົ້າໝອງ ມີໃຈຫຍາບຊ້າ ໜ້າໄຫວ້ຫຼັງຫຼອກ
ປະທຸດສະຮ້າຍມິດ ຂາດຄວາມກະລຸນາຜູ້ອື່ນ ຖືໂຕຈັດ
ບໍ່ມັກໃຫ້ທານ ແລະບໍ່ເຄີຍໃຫ້ອັນໃດແກ່ໃຜ ໆ
ນີ້ຕ່າງຫາກ ຊື່ວ່າ ກິນດິບ ບໍ່ແມ່ນອາຫານທີ່ປຸງດ້ວຍຊີ້ນແຕ່ຢ່າງໃດ

[໔໘໘] ຄວາມໂກດ ຄວາມມົວເມົາ ຄວາມດື້ດ້ານ ການຕັ້ງຕົນໄວ້ຜິດ
ຄວາມມີມາຍາ ຄວາມຣິດສະຫຍາ ການຍົກຕົນຂົ່ມຜູ້ອື່ນ
ການຖືໂຕດູຖູກຜູ້ອື່ນ ແລະການສະມາຄົມກັບອະສັດຕະບຸຣຸດ
ນີ້ຕ່າງຫາກ ຊື່ວ່າ ກິນດິບ ບໍ່ແມ່ນອາຫານທີ່ປຸງດ້ວຍຊີ້ນແຕ່ຢ່າງໃດ

[໔໘໙] ໃນໂລກນີ້ ຄົນຜູ້ປະພຶດຊົ່ວເປັນປົກກະຕິ
ກູ້ໜີ້ແລ້ວບໍ່ຊົດໃຊ້ ມັກເວົ້າສໍ່ຽດສີ
ເປັນພະຍານໃຫ້ການຕົວະ ປອມເປັນນັກບວດໃນສາດສະໜານີ້
ເປັນຄົນຕ່ຳຊາມ ເຮັດຄວາມຊົ່ວຮ້າຍແຮງໄວ້
ນີ້ຕ່າງຫາກ ຊື່ວ່າ ກິນດິບ ບໍ່ແມ່ນອາຫານທີ່ປຸງດ້ວຍຊີ້ນແຕ່ຢ່າງໃດ

[໘໕໐] ໃນໂລກນີ້ ຄົນຜູ້ຂ້າສັດທັງຫຼາຍ
ຖືເອົາຊັບຂອງຜູ້ອື່ນ ບຽດບຽນຊີວິດຜູ້ອື່ນ
ປະພຶດຊົ່ວ ດຸຮ້າຍ ເວົ້າຄຳຫຍາບ ບໍ່ມີຄວາມເອື້ອເຟື້ອ
ນີ້ຕ່າງຫາກ ຊື່ວ່າ ກິ່ນດິບ ບໍ່ແມ່ນອາຫານທີ່ປຸງດ້ວຍຊີ້ນແຕ່ຢ່າງໃດ

[໘໕໑] ຄົນຜູ້ຮັກແພງ ກຽດຊັງ ລຸ້ມຫຼົງ
ປະກອບອະກຸສົນກຳຢູ່ສະເໝີ
ຕາຍແລ້ວຕ້ອງຕົກໄປສູ່ທີ່ມືດ ບໍ່ກໍດິ່ງຫົວຈົມລົງໄປສູ່ນະຮົກ
ນີ້ຕ່າງຫາກ ຊື່ວ່າ ກິ່ນດິບ ບໍ່ແມ່ນອາຫານທີ່ປຸງດ້ວຍຊີ້ນແຕ່ຢ່າງໃດ

[໘໕໒] ບໍ່ແມ່ນການບໍຣິໂພກປາແລະຊີ້ນ ບໍ່ແມ່ນການເປັນຄົນເປືອຍ
ບໍ່ແມ່ນຄວາມເປັນຄົນໂລ້ນ ບໍ່ແມ່ນການເກົ້າຊະດາ
ແລະການເປັນຄົນໝັກໝົມດ້ວຍທຸລີ
ບໍ່ແມ່ນການຄອງໜັງເສືອທີ່ຍັງມີເລັບ ບໍ່ແມ່ນການປົນເປີໄຟ
ຫຼືຄວາມເສົ້າໝອງໃນກາຍ
ທີ່ເປັນໄປດ້ວຍຄວາມປາຖະໜາຄວາມເປັນເທບ
ຄວາມເປັນຜູ້ບໍ່ຕາຍ ການເຮັດຕົນໃຫ້ລຳບາກຫຼາຍ ໆ ວິທີ
ເວດມົນທັງຫຼາຍ ການບູຊາໄຟ ການບູຊາຍັນ
ແລະການທໍລະມານຕົນຕາມລະດູ
ທີ່ເຮັດຄົນຜູ້ຍັງບໍ່ລ່ວງພົ້ນຄວາມສົງໄສໃຫ້ມົດຈິດໄດ້

[໘໕໓] ຜູ້ໃດຄຸ້ມຄອງອິນຊີທັງ ໖ ນັ້ນໄດ້
ເຂົ້າໃຈແຈ້ງອິນຊີ ໖ ຢູ່ສະເໝີ ດຳລົງຕົນຢູ່ໃນທຳ
ຍິນດີໃນຄວາມຊື່ກົງແລະຄວາມອ່ອນໂຍນ
ລ່ວງພົ້ນກິເລດເຄື່ອງຂ້ອງໄດ້ ລະທຸກທັງໝົດໄດ້ເດັດຂາດ
ຜູ້ນັ້ນຊື່ວ່າ ເປັນປາດ ບໍ່ຍຶດຕິດໃນອາລົມທີ່ໄດ້ເຫັນ ໄດ້ຟັງ ແລະໄດ້ຮັບຮູ້

[໘໕໔] ພຣະຜູ້ມີພຣະພາກເຈົ້າໄດ້ຕັດບອກຄວາມທີ່ກ່າວມານີ້ເນືອງ ໆ
ຈົນຕິດສະດາບົດຜູ້ຮຽນຈົບມົນເຂົ້າໃຈຂໍ້ຄວາມນັ້ນໄດ້ແລ້ວ
ພຣະຜູ້ມີພຣະພາກເຈົ້າຜູ້ເປັນມຸນີ ໄດ້ຊົງປະກາດດ້ວຍພຣະຄາຖາອັນມ່ວນວ່າ
ບຸກຄົນຜູ້ບໍ່ມີກິເລດຄືກິ່ນດິບ
ບໍ່ມີຕັນຫາແລະທິດຖິອາໄສ
ໃຜ ໆ ກໍແນະນຳໄດ້ຍາກ

[໔໕໔] ຕົດສະດາບົດຟັງບົດສຸພາສິດວ່າດ້ວຍເລື້ອງສິ່ງທີ່ບໍ່ມີກິ່ນດິບ
ທີ່ເປັນເຄື່ອງບັນເທົາທຸກທັງປວງ
ຂອງພຣະກັດສະປະສຳມາສຳພຸດທະເຈົ້າແລ້ວ
ມີໃຈອ່ອນນ້ອມ ຖວາຍອະພິວາດພຣະຕະຖາຄົດ
ແລະຂາບທູນຂໍບັນພະຊາອຸປະສົມບົດ ຢູ່ບ່ອນນັ້ນນັ້ນເອງ

**ອາມະຄັນທະສູດທີ ໘ ຈົບ**

## ໓. ຫິຣິສູດ

## ວ່າດ້ວຍຄວາມລະອາຍ

[໔໕໖] (ພຣະຜູ້ມີພຣະພາກເຈົ້າຊົງຕອບບັນຫາຂອງດາບົດດັ່ງນີ້)
ຄົນຜູ້ບໍ່ມີຫິຣິ ລັງກຽດຄົນມີຫິຣິ
ມັກເວົ້າວ່າ ເຮົາເປັນເພື່ອນທ່ານ
ແຕ່ບໍ່ເຄີຍຊ່ວຍເຫຼືອວຽກງານຂອງເພື່ອນເລີຍ
ເພິ່ງຮູ້ເທີ້ນວ່າ ຄົນນັ້ນບໍ່ແມ່ນເພື່ອນເຮົາ

[໔໕໗] ຄົນເວົ້າວາຈາມ່ວນອ່ອນຫວານ
ແຕ່ບໍ່ເຮັດປະໂຫຍດແກ່ມິດ
ບັນດິດຮຽກວ່າ ຜູ້ດີແຕ່ເວົ້າ

[໔໕໘] ມິດໃດບໍ່ພິດເຜີ ມຸ້ງຫວັງຄວາມແຕກແຍກກັນ
ຈ້ອງຫາແຕ່ຄວາມຜິດທີ່ນັ້ນທຸກເວລາ
ມິດນັ້ນບໍ່ຄວນຄົບ
ສ່ວນມິດທີ່ວາງໃຈໄດ້ ຄືບຸດໃນໄສ້
ເຖິງຜູ້ອື່ນກ່າວເຫດຕັ້ງຮ້ອຍຢ່າງພັນອັນ
ກໍບໍ່ແຕກແຍກຈາກກັນ
ມິດເຊັ່ນນັ້ນຄວນຄົບຢ່າງຍິ່ງ

[໔໕໙] ຄວາມພຽນທີ່ເປັນເຫດໃຫ້ເກີດປາໂມດ
ຍ່ອມນຳທັງຄວາມສັນເສີນແລະຄວາມສຸກມາໃຫ້
ຜູ້ຫວັງຜົນ ນຳທຸລະອັນສົມຄວນແກ່ບຸຣຸດ
ຍ່ອມເຮັດຄວາມພຽນນັ້ນໃຫ້ຈະເລີນໄດ້

[໔໖໐] ບຸກຄົນດື່ມປະວິເວກຣົດ
ຊີມຣົດແຫ່ງຄວາມສະຫງົບ
ແລະໄດ້ຊີມຣົດແຫ່ງປີຕິໃນທຳແລ້ວ
ເປັນຜູ້ບໍ່ມີຄວາມກະວົນກະວາຍ ບໍ່ມີບາບ[១]

**ທີຣີສູດທີ ໓ ຈົບ**

## ໔. ມຸງຄຸນສູດ

## ວ່າດ້ວຍມຸງຄຸນ[໒]

ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ເມື່ອຣາຕີຜ່ານໄປ[໓] ເທວະດາອົງໜຶ່ງມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງໄປທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

[໔໖໑] ເທວະດາແລະມະນຸດຈຳນວນຫຼາຍ
ຕ່າງມຸ້ງຫວັງຄວາມປອດໄພ ຮ່ວມກັນຄິດເຖິງເລື້ອງມຸງຄຸນ
ຂໍພຣະອົງຕັດບອກມຸງຄຸນອັນສູງສຸດດ້ວຍເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໔໖໒] (໑) ການບໍ່ຄົບຄົນພານ (໒) ການຄົບແຕ່ບັນດິດ
(໓) ການບູຊາຄົນທີ່ຄວນບູຊາ ນີ້ເປັນມຸງຄຸນອັນສູງສຸດ

[໔໖໓] (໔) ການຢູ່ໃນຖິ່ນທີ່ເໝາະສົມ (໕) ການໄດ້ສ້າງບຸນໄວ້ໃນປາງກ່ອນ
(໖) ການຕັ້ງຕົນໄວ້ຖືກຕ້ອງ ນີ້ເປັນມຸງຄຸນອັນສູງສຸດ

[໔໖໔] (໗) ຄວາມເປັນພະຫູສູດ (໘) ຄວາມເປັນຜູ້ມີສິລະປະ
(໙) ວິໄນທີ່ສຶກສາມາດີ (໑໐) ວາຈາສຸພາສິດ
ນີ້ເປັນມຸງຄຸນອັນສູງສຸດ

[໔໖໕] (໑໑) ການບຳລຸງມານດາບິດາ (໑໒) ການສົງເຄາະບຸດ

(໑໓) ການສົງເຄາະພັນລະຍາ (໑໔) ການເຮັດວຽກງານບໍ່ອາກູນ
ນີ້ເປັນມຸງຄຸນອັນສູງສຸດ

[໔໘໘] (໑໕) ການໃຫ້ທານ (໑໖) ການປະພຶດທຳ
(໑໗) ການສົງເຄາະຍາດ (໑໘) ການງານທີ່ບໍ່ມີໂທດ
ນີ້ເປັນມຸງຄຸນອັນສູງສຸດ

[໔໘໗] (໑໙) ການງົດເວັ້ນຈາກບາບ (໒໐) ການງົດເວັ້ນຈາກການດື່ມນ້ຳເມົາ
(໒໑) ຄວາມບໍ່ຜະໝາດໃນທຳ ນີ້ເປັນມຸງຄຸນອັນສູງສຸດ

[໔໘໘] (໒໒) ຄວາມເຄົາລົບ (໒໓) ຄວາມຖ່ອມຕົນ
(໒໔) ຄວາມສັນໂດດ (໒໕) ຄວາມກະຕັນຍູ
(໒໖) ການຟັງທຳຕາມການ ນີ້ເປັນມຸງຄຸນອັນສູງສຸດ

[໔໘໙] (໒໗) ຄວາມອົດທົນ (໒໘) ຄວາມເປັນຄົນວ່າງ່າຍ
(໒໙) ການພົບເຫັນສະມະນະ (໓໐) ການສົນທະນາທຳຕາມການ
ນີ້ເປັນມຸງຄຸນອັນສູງສຸດ

[໔໗໐] (໓໑) ການເຜົາຜານບາບ (໓໒) ການປະພຶດພົມມະຈັນ
(໓໓) ການເຫັນອະຣິຍະສັດ (໓໔) ການເຮັດນິບພານໃຫ້ແຈ້ງ
ນີ້ເປັນມຸງຄຸນອັນສູງສຸດ

[໔໗໑] (໓໕) ຈິດຂອງຜູ້ທີ່ຖືກໂລກກະທຳກະທົບແລ້ວບໍ່ຫວັ່ນໄຫວ
(໓໖) ຈິດບໍ່ເສົ້າໂສກ (໓໗) ຈິດປາສະຈາກທຸລີ (໓໘) ຈິດກະເສມ
ນີ້ເປັນມຸງຄຸນອັນສູງສຸດ

[໔໗໒] ເທວະດາແລະມະນຸດເຮັດມຸງຄຸນດັ່ງກ່າວມານີ້ແລ້ວ
ບໍ່ປຣາໄຊໃນຂ້າເສິກທັງປວງ ຍ່ອມເຖິງຄວາມປອດໄພໃນທີ່ທຸກສະຖານ
ທັງ ໓໘ ປະການນັ້ນ ເປັນມຸງຄຸນອັນສູງສຸດ
ຂອງເທວະດາແລະມະນຸດເຫຼົ່ານັ້ນ

**ມຸງຄຸນສູດທີ ໔ ຈົບ**

# ໕. ສູຈິໂລມະສູດ[១]
## ວ່າດ້ວຍສູຈິໂລມະຍັກທູນຖາມບັນຫາ

ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເທິງແທ່ນຫີນ ໃນບ່ອນອາໄສຂອງສູຈິໂລມະຍັກ ໃກ້ໝູ່ບ້ານຄະຍາ ສະໄໝນັ້ນ ຂະຣະຍັກແລະສູຈິໂລມະຍັກຍ່າງຜ່ານເຂົ້າມາໃກ້ ໆ ພຣະຜູ້ມີພຣະ ພາກເຈົ້າ ທັນໃດນັ້ນ ຂະຣະຍັກໄດ້ກ່າວກັບສູຈິໂລມະຍັກວ່າ ນັ້ນ ສະມະນະ ສູຈິໂລມະຍັກກັບກ່າວວ່າ ນັ້ນ ບໍ່ແມ່ນສະມະນະຈິງ ແຕ່ເປັນສະມະນະປອມ ດ່ຽວກໍຮູ້ວ່າສະມະນະຈິງຫຼືສະມະນະປອມກັນແນ່

ຕໍ່ຈາກນັ້ນ ສູຈິໂລມະຍັກເຂົ້າໄປຫາພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ນ້ອມກາຍເຂົ້າໄປຈົນຊິດພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າຊົງຍັບພຣະວໍຣະກາຍອອກໄປ ສູຈິໂລມະຍັກ ຈຶ່ງກ່າວກັບພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ສະມະນະ ທ່ານຢ້ານຂ້າພະເຈົ້າບໍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຍັກເອີຍ ເຮົາບໍ່ເຄີຍຢ້ານທ່ານເລີຍ ແຕ່ສຳຜັດຂອງທ່ານຫຍາບກະດ້າງເຫຼືອເກີນ

ສູຈິໂລມະຍັກກ່າວວ່າ ສະມະນະ ຂ້າພະເຈົ້າຈະຂໍຕັ້ງບັນຫາຖາມທ່ານ ຖ້າທ່ານຕອບຂ້າພະເຈົ້າບໍ່ໄດ້ ຂ້າພະເຈົ້າຈະຄວັກດວງຈິດຂອງທ່ານອອກໂຍນຖິ້ມສາ ຈະຍ່ອງຫົວໃຈທ່ານໃຫ້ແຫຼກສະຫຼາຍ ບໍກໍຈະຈັບຕີນທັງສອງຂອງທ່ານຄວ່າງໄປຕົກທີ່ຝັ່ງແມ່ນ້ຳຄົງຄາຟາກນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຍັກເອີຍ ເຮົາຍັງບໍ່ເຫັນໃຜຈັກຄົນເລີຍໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະ ມະນຸດຜູ້ຈະສາມາດຄວັກດວງຈິດຂອງເຮົາອອກໂຍນຖິ້ມ ຈະຍ່ອງຫົວໃຈເຮົາໃຫ້ແຫຼກສະຫຼາຍ ບໍກໍຈະຈັບຕີນທັງສອງຂອງເຮົາຄວ່າງໄປຕົກທີ່ຝັ່ງແມ່ນ້ຳຄົງຄາຟາກນັ້ນໄດ້ ຖ້າຈັ່ງຊັ້ນແລ້ວ ເຊີນທ່ານຖາມບັນຫາຕາມທີ່ທ່ານສົງໄສເທີ້ນ

ລຳດັບນັ້ນ ສູຈິໂລມະຍັກໄດ້ທູນຖາມບັນຫາກັບພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

[໔໗໓] ຣາຄະແລະໂທສະ ມີອັນໃດເປັນເຫດ
ຄວາມບໍ່ຍິນດີ ຄວາມຍິນດີ
ແລະຄວາມຂົນຫົວລຸກເກີດຈາກອັນໃດ
ຄວາມນຶກໃນໃຈເກີດຈາກອັນໃດ ຍ່ອມມັດຈິດໄວ້ໄດ້
ຄືພວກເດັກມັດຕີນກາໄວ້ ສັນນັ້ນ

[໔໗໔]　(ພຣະຜູ້ມີພຣະພາກເຈົ້າຕັດຕອບດ້ວຍພຣະຄາຖາດັ່ງນີ້)
ຣາຄະແລະໂທສະມີອັດຕະພາບນີ້ເປັນເຫດ
ຄວາມບໍ່ຍິນດີ ຄວາມຍິນດີ
ແລະຄວາມຂົນຫົວລຸກເກີດຈາກອັດຕະພາບນີ້
ຄວາມນຶກໃນໃຈເກີດຈາກອັດຕະພາບນີ້ ຍ່ອມມັດຈິດໄວ້ໄດ້
ຄືພວກເດັກມັດຕີນກາໄວ້ ສັນນັ້ນ

[໔໗໕]　ອະກຸສົນວິຕົກຫຼວງຫຼາຍເກີດຈາກຄວາມເຍື່ອໃຍ໑
ເກີດຂຶ້ນໃນຕົນແລ້ວແຜ່ຊ່ານໄປໃນວັດຖຸກາມທັງຫຼາຍ
ຄືຍອຍໄຮເກີດຈາກຕົ້ນໄຮແລ້ວແຜ່ຂະຫຍາຍໄປໃນປ່າ ສັນນັ້ນ

[໔໗໖]　ສັດເຫຼົ່າໃດຮູ້ແຈ້ງໝູ່ກິເລດນັ້ນວ່າ ມີກິເລດໃດເປັນເຫດ
ສັດເຫຼົ່ານັ້ນຍ່ອມບັນເທົາໝູ່ກິເລດນັ້ນໄດ້
ທ່ານຈົ່ງຟັງເທີ້ນຍັກ ສັດເຫຼົ່າໃດບັນເທົາໝູ່ກິເລດໄດ້
ສັດເຫຼົ່ານັ້ນຍ່ອມຂ້າມພົ້ນໂອຄະທີ່ຂ້າມໄດ້ຍາກ
ອັນຕົນບໍ່ເຄີຍຂ້າມ ເພື່ອຄວາມບໍ່ມີພົບໃໝ່ຕໍ່ໄປ

**ສູຈິໂລມະສູດທີ ໕ ຈົບ**

## ໖. ທຳມະຈະຣິຍະສູດ

## ວ່າດ້ວຍການປະພຶດທຳ

(ພຣະຜູ້ມີພຣະພາກເຈົ້າຕັດແກ່ຄະລືຫັດແລະບັນພະຊິດທັງຫຼາຍດັ່ງນີ້)

[໔໗໗]　ພຣະອະຣິຍະທັງຫຼາຍກ່າວການປະພຶດທຳ໑
ແລະການປະພຶດພົມມະຈັນ໌ທັງ ໘ ນີ້ວ່າ ເປັນຣັດຕະນະອັນສູງສຸດ
ຖ້າບຸກຄົນອອກຈາກເຮືອນມາບວດເປັນບັນພະຊິດ

[໔໗໘]　ຫາກຜູ້ທີ່ບວດແລ້ວນັ້ນເປັນຄົນປາກຮ້າຍ
ມັກບຽດບຽນຜູ້ອື່ນຄືສັດປ່າ
ຊີວິດຂອງເຂົາຊື່ວ່າຕ່ຳຊາມທີ່ສຸດ
ຍ້ອນມີແຕ່ຈະເຮັດໃຫ້ທຸລີຄືກິເລດພອກພູນໃນໃຈຂອງຕົນ

[໔໗໙]　ພິກຂຸຜູ້ມັກຜິດຖຽງ ຖືກໂມຫະປົດບັງ
ແມ່ນເພື່ອນພົມມະຈາຣີຜູ້ມີສິນຕັກເຕືອນແລ້ວ

ກໍບໍ່ຍອມຮັບຮູ້ທຳວິໄນທີ່ພຣະພຸດທະເຈົ້າຊົງສະແດງແລ້ວ

[໔໗໐] ພິກຂຸຜູ້ຖືກອະວິດຊາຫຸ້ມຫໍ່ແລ້ວ
ມັກບຽດບຽນພຣະອະຣິຍະຜູ້ອົບຮົມຕົນແລ້ວ
ບໍ່ຮູ້ວ່າເປັນຄວາມເສົ້າໝອງແລະເປັນຫົນທາງໃຫ້ຕົກນະຮົກ

[໔໗໑] ພິກຂຸເມື່ອບໍ່ຮູ້ເຊັ່ນນັ້ນ ກໍຕ້ອງເກີດໃນອະບາຍ
ອອກຈາກທ້ອງສູ່ທ້ອງ ອອກຈາກທີ່ມືດສູ່ທີ່ມືດ
ພິກຂຸຜູ້ເຊັ່ນນັ້ນເມື່ອຕາຍໄປຍ່ອມໄດ້ຮັບທຸກ

[໔໗໒] ບຸກຄົນໃດມີຄວາມປະພຶດເສຍຫາຍແນວນີ້ຕະຫຼອດການລະນານ
ເພິ່ງເປັນຜູ້ເຕັມດ້ວຍບາບ ຄືຂຸມຄູດທີ່ເຕັມຢູ່ດົນປີ
ບຸກຄົນນັ້ນເປັນຜູ້ມີກິເລດພຽງດັ່ງເນີນ ຊຳຮະໃຫ້ໝົດຈົດໄດ້ຍາກ

[໔໗໓] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຮູ້ຈັກບຸກຄົນຜູ້ອາໄສເຮືອນ[๑]
ມີຄວາມປາຖະໜາຊົ່ວ ມີຄວາມດຳຣິຊົ່ວ
ມີອາຈາຣະແລະໂຄຈອນຊົ່ວ ແນວນີ້

[໔໗໔] ທ່ານທັງຫຼາຍເພິ່ງເປັນຜູ້ພ້ອມພຽງກັນ ເຊົາຄົບບຸກຄົນນັ້ນ
ຈົ່ງກຳຈັດຜູ້ທີ່ບໍ່ມີຄຸນນະທຳໃນໃຈຄືແກບອອກສາ
ຈົ່ງລາກຜູ້ທຸສິນອອກຈາກໝູ່
ຄືຄົນກຳຈັດຂີ້ເຫຍື່ອອອກຈາກເຮືອນ ສັນນັ້ນ

[໔໗໕] ຕໍ່ຈາກນັ້ນ ທ່ານທັງຫຼາຍຈົ່ງຂັບໄລ່ຜູ້ທີ່ບໍ່ແມ່ນສະມະນະ
ແຕ່ແຕ່ງກາຍເອົາແບບສະມະນະອອກໄປຈາກສົງ
ຄືຄົນຄັດເຂົ້າລີບຖິ້ມ ສັນນັ້ນ
ເມື່ອກຳຈັດພວກປາຖະໜາຊົ່ວ
ມີອາຈາຣະແລະໂຄຈອນຊົ່ວອອກໄດ້ແລ້ວ

[໔໗໖] ທ່ານທັງຫຼາຍຜູ້ມີສິນບໍລິສຸດ
ຈົ່ງເຄົາລົບຢຳເກງກັນຢູ່ຮ່ວມກັບທ່ານຜູ້ບໍລິສຸດ
ຫຼັງຈາກນັ້ນ ທ່ານທັງຫຼາຍຈົ່ງເປັນຜູ້ສາມັກຄີກັນ
ມີປັນຍາຮັກສາຕົນ ຈັກເຮັດບ່ອນສຸດແຫ່ງທຸກໄດ້

**ທຳມະຈະຣິຍະສູດທີ ໖ ຈົບ**

## ໗. ພາມມະນະທຳມິກະສູດ

## ວ່າດ້ວຍທຳຂອງພາມທີ່ແທ້ຈິງ

ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພາມມະຫາສານຊາວໂກສົນຈຳນວນຫຼາຍ ເຊິ່ງລ້ວນແຕ່ເປັນຜູ້ແກ່ເຖົ້າ ສູງອາຍຸ ເປັນຜູ້ໃຫຍ່ ລ່ວງການຜ່ານໄວມາໂດຍລຳດັບແລ້ວ ທັງຫຼາຍພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວໄດ້ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ທ່ານພຣະໂຄດົມ ປັດຈຸບັນນີ້ ພາມ໌ທັງຫຼາຍຍັງນິຍົມປະຕິບັດທຳນຽມຂອງພາມສະໄໝບູຮານຢູ່ບໍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ທ່ານພາມທັງຫຼາຍ ປັດຈຸບັນນີ້ ພາມທັງຫຼາຍບໍ່ນິຍົມປະຕິບັດທຳນຽມຂອງພາມສະໄໝບູຮານເລີຍ

ພາມທັງຫຼາຍທູນວ່າ ຂ້າແດ່ທ່ານພຣະໂຄດົມ ຂໍປະທານວະໂຣກາດ ຫາກບໍ່ຊົງໜັກພຣະຫະໄທ ຂໍພຣະອົງໂຜດຕັດບອກທຳນຽມຂອງພາມສະໄໝບູຮານແກ່ຂ້າພຣະອົງທັງຫຼາຍດ້ວຍເທີ້ນຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ທ່ານພາມທັງຫຼາຍ ຖ້າເປັນແນວນັ້ນ ທ່ານທັງຫຼາຍຈົ່ງຟັງຈົ່ງໃສ່ໃຈໃຫ້ດີ ເຮົາຈະກ່າວ

ພາມມະຫາສານເຫຼົ່ານັ້ນທູນຮັບສະໜອງພຣະພຸດທະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດພຣະດຳຣັດນີ້ວ່າ

[໔໙໗] ລືສີທັງຫຼາຍສະໄໝກ່ອນ ມີຄວາມສັງລວມຕົນ
ມີຕະບະ໌ ລະການມະຄຸນ ໕ ໄດ້ແລ້ວ
ພໍ່າເພັງປະໂຫຍດຕົນໃຫ້ສຳເລັດ

[໔໙໘] ພາມສະໄໝກ່ອນ ບໍ່ມີສັດລ້ຽງ
ບໍ່ສະສົມເງິນຄຳ ບໍ່ມີສິ່ງຂອງຕ່າງ ໆ
ພວກເຂົາມີຊັບແລະທັນຍະຊາດຄືການສາທະຍາຍມົນ
ຮັກສາຂຸມຊັບທີ່ປະເສີດ໌ໄວ້

[໔໗໙] ທາຍົກຕ່າງເຕັມໃຈຖວາຍພັດຕາຫານ
ທີ່ຕົນຈັດກຽມໄວ້ທີ່ປະຕູເຮືອນ
ແກ່ພາມທີ່ສະແຫວງຫາພັດຕາຫານ
ທີ່ບຸກຄົນໃຫ້ດ້ວຍສັດທາເປັນປະຈຳ

[໔໘໐] ທັງຊາວຊົນນະບົດແລະຊາວເມືອງຕ່າງແຕ່ງກາຍ
ດ້ວຍເສື້ອຜ້າແພພັນຫຼາກສີ
ມີບ່ອນຢູ່ຫຼັບນອນອາໄສເປັນຫຼັກແຫຼ່ງໝັ້ນຄົງ
ໄດ້ພາກັນເຄົາລົບນັບຖືພາມເຫຼົ່ານັ້ນ

[໔໘໑] ພາມທັງຫຼາຍ ຊື່ວ່າມີທຳຮັກສາ
ຈຶ່ງບໍ່ມີໃຜ ໆ ຄິດຂ້າ ຄິດເອົາຊະນະ
ແລະທຸກຄົວເຮືອນບໍ່ມີໃຜ ໆ ປະຕິເສດພາມເຫຼົ່ານັ້ນເລີຍ

[໔໘໒] ສະໄໝກ່ອນ ພາມໄດ້ປະພຶດພົມມະຈັນຕັ້ງແຕ່ເດັກ
ທ່ຽວເສາະສະແຫວງຫາວິດຊາແລະຈະຣະນະ ນັບເປັນເວລາດົນເຖິງ ໔໘ ປີ

[໔໘໓] ພາມເຫຼົ່ານັ້ນບໍ່ສົມສູ່ກັບຍິງວັນນະອື່ນ
ທັງບໍ່ຍອມໃຊ້ເງິນຊື້ຍິງມາເປັນພັນລະຍາ
ແຕ່ຈະອະພິຣົມຢູ່ກິນກັບຍິງທີ່ຜູ້ປົກຄອງຍົກໃຫ້
ດ້ວຍຄວາມສະໝັກໃຈທໍ່ນັ້ນ

[໔໘໔] ພາມຜູ້ເປັນສາມີຍ່ອມບໍ່ຮ່ວມກັບພັນລະຍາຜູ້ເວັ້ນຈາກລະດູ໌
ນອກຈາກສະໄໝທີ່ຄວນຈະຮ່ວມ
ພາມຍ່ອມບໍ່ຮ່ວມເມຖຸນທຳໃນລະຫວ່າງໂດຍແທ້

[໔໘໕] ພາມສະໄໝນັ້ນພາກັນສັນເສີນການປະພຶດພົມມະຈັນ໌
ສິນ ຄວາມຊື່ກົງ ຄວາມອ່ອນໂຍນ ຕະບະ
ຄວາມສະງົບສະງ່ຽມ ການບໍ່ບຽດບຽນກັນ ແລະຂັນຕິ

[໔໘໖] ພາມຜູ້ສະເໝີດ້ວຍພົມ ຜູ້ມີຄວາມບາກບັ່ນໝັ້ນຄົງ
ເປັນຜູ້ສູງສຸດກວ່າພາມເຫຼົ່ານັ້ນ
ແລະພາມເຫຼົ່ານັ້ນຍ່ອມບໍ່ເສບເມຖຸນທຳ
ແມ່ນແຕ່ຈະຝັນເຖິງກໍບໍ່ມີ

[໔໙໗] ພາມລາງພວກຜູ້ເປັນບັນດິດໃນໂລກນີ້
ສຶກສາຕາມຂໍ້ວັດປະຕິບັດ ຂອງພາມຜູ້ສະເໝີດ້ວຍພົມນັ້ນຢູ່
ຈຶ່ງສັນເສີນການປະພຶດພົມມະຈັນ ສິນ ແລະຂັນຕິ

[໔໙໘] ພາມທັງຫຼາຍຜູ້ຂໍເຂົ້າສານ ບ່ອນນອນ ຜ້າ ເນີຍໃສ ແລະນ້ຳມັນ
ມາເກັບຮັບໂຮມໄວ້ໂດຍທຳແລ້ວບູຊາຍັນດ້ວຍຂອງເຫຼົ່ານັ້ນ

[໔໙໙] ໃນຍັນທີ່ບູຊານັ້ນ ພາມຈະບໍ່ຍອມຂ້າແມ່ງົວເລີຍ
ຄືມານດາບິດາ ພີ່ນ້ອງ ຫຼືແມ່ນຍາດອື່ນ ໆ
ບໍ່ຍອມຂ້າແມ່ງົວ ຍ້ອນຄິດວ່າແມ່ງົວເປັນສັດມີອຸປະກາຣະຍິ່ງໃຫຍ່
ເຊິ່ງຜະລິດປັນຈະໂຄຣົດ໌ອັນເປັນຢາ

[໕໐໐] ອັນໜຶ່ງ ແມ່ງົວນັ້ນໃຫ້ເຂົ້າ ໃຫ້ກຳລັງ ໃຫ້ຜິວພັນ ແລະຄວາມສຸກ
ພາມຮູ້ເຖິງປະໂຫຍດຍິ່ງໃຫຍ່ແນວນີ້ຈຶ່ງບໍ່ຍອມຂ້າແມ່ງົວ

[໕໐໑] ພາມເຫຼົ່ານັ້ນມີຜິວເນື້ອລະອຽດອ່ອນ
ມີຮູບຮ່າງໃຫຍ່ ມີຜິວພັນຜຸດຜ່ອງ ມີກຽດຕິຍົດ
ປະຕິບັດໜ້າທີ່ໃຫຍ່ນ້ອຍຕາມທຳນຽມຂອງຕົນຢ່າງເຄັ່ງຄັດ
ໄດ້ພໍ່າເພັງຈະຣິຍາຂໍ້ວັດປະຕິບັດຕ່າງ ໆ ໃນໂລກ
ມຸ້ງໃຫ້ປະຊາຊົນປະສົບສຸກສະວັດສະດີ

[໕໐໒] ຕໍ່ມາ ພາມເຫຼົ່ານັ້ນເກີດຄວາມສຳຄັນຜິດ
ຍ້ອນເຫັນຄວາມສຸກພຽງເລັກໜ້ອຍທີ່ເກີດຈາກການມະຄຸນທີ່ຕ່ຳຊາມ
ສົມບັດອັນວິເສດຂອງພຣະເຈົ້າແຜ່ນດິນ ແລະສະຕີທີ່ແຕ່ງກາຍງົດງາມ

[໕໐໓] ລົດຫຼຽມມ້າອາຊາໄນທີ່ຕົກແຕ່ງໄວ້ດີ
ສະລັກລວດລາຍຢ່າງວິຈິດ
ເຮືອນໃຫຍ່ເຮືອນນ້ອຍທີ່ແບ່ງສັດສ່ວນໄວ້ເປັນຢ່າງດີ

[໕໐໔] ພາມຜູ້ສຳຄັນຜິດນັ້ນ
ປາຖະໜາຢາກເປັນເຈົ້າຂອງໂພຄະຊັບ
ເຊິ່ງເປັນຂອງມະນຸດອັນໂອລານ ເຕັມໄປດ້ວຍຝູງງົວ
ປະກອບໄປດ້ວຍໝູ່ນາຣີຜູ້ປະເສີດ

[໕໐໕] ພາມເຫຼົ່ານັ້ນຈຶ່ງຜູກມົນມຸ້ງຫວັງໂພຄະສົມບັດນັ້ນ ໆ

ແລ້ວພາກັນເຂົ້າໄປເຝົ້າພຣະເຈົ້າໂອກກາກະ ຂາບທູນວ່າ
ພຣະອົງຊົງມີຊັບແລະທັນຍະຊາດເປັນຈຳນວນຫຼາຍ
ຂໍພຣະອົງຊົງບູຊາຍັນເທີ້ນ
ພຣະອົງຈະຊົງມີແກ້ວ ແຫວນ ເງິນ ຄຳ
ພືດພັນທັນຍາຫານເພີ່ມຫຼາຍຂຶ້ນ

[໙໐໖] ແລະເມື່ອພຣະເຈົ້າແຜ່ນດິນຜູ້ຊົງອົງອາດຍິ່ງໃຫຍ່
ຊົງຍິນຍອມຕາມຄຳຂອງພາມນັ້ນແລ້ວ
ຈຶ່ງຊົງບູຊາຍັນ ຄື ອັດສະເມທະ ປຸຣິສະເມທະ
ສຳມາປາສະ ວາຊະເປີຍຍະ ແລະນິຣັກຄະລະ[១]
ເມື່ອສຳເລັດແລ້ວກໍພຣະຣາດຊະທານຊັບແກ່ພາມເຫຼົ່ານັ້ນ

[໙໐໗] ອີກທັງງົວ ບ່ອນນອນ ຜ້າ ສະຕີທີ່ແຕ່ງກາຍງົດງາມ
ລົດທຽມມ້າອາຊາໄນທີ່ຕົກແຕ່ງໄວ້ດີ
ສະລັກລວດລາຍຢ່າງວິຈິດ

[໙໐໘] ທັງຮັບສັ່ງໃຫ້ນຳເອົາທັນຍະຊາດຕ່າງໆ
ໄປບັນຈຸໄວ້ໃຫ້ເຕັມເຮືອນທີ່ໜ້າອອນຊອນ ເຊິ່ງແບ່ງສັດສ່ວນໄວ້ເປັນຢ່າງດີ
ແລ້ວພຣະຣາດຊະທານຊັບແກ່ພາມເຫຼົ່ານັ້ນ

[໙໐໙] ພາມເຫຼົ່ານັ້ນໄດ້ຊັບທີ່ພຣະຣາດຊະທານນັ້ນ ໆ ແລ້ວ
ມັກເກັບສະສົມໄວ້ ຈຶ່ງຖືກຄວາມຢາກຄອບງຳ
ເພີ່ມພູນຄວາມຢາກໄດ້ຫຼາຍຍິ່ງຂຶ້ນໄປອີກ
ພວກເຂົາຈຶ່ງຜູກມົນມຸ້ງຫວັງໂພຄະຊັບນັ້ນ ໆ ຂຶ້ນ
ພາກັນເຂົ້າໄປເຝົ້າພຣະເຈົ້າໂອກກາກະອີກ

[໙໑໐] ຂາບທູນວ່າ ງົວທັງຫຼາຍເກີດຂຶ້ນເພື່ອໃຫ້ໃຊ້ເຮັດປະໂຫຍດ
ໃນກິດຈະການຕ່າງ ໆ ຂອງມະນຸດ
ຄືແມ່ນ້ຳ ແຜ່ນດິນ ເງິນຄຳ ຊັບສິນແລະພືດພັນທັນຍາຫານ
ເກີດຂຶ້ນເພື່ອໃຫ້ມະນຸດໃຊ້ປະໂຫຍດ
ຂໍພຣະອົງຊົງເຮັດພິທີບູຊາຍັນເທີ້ນ
ພຣະອົງຈະຊົງມີແກ້ວ ແຫວນ ເງິນ ຄຳ
ພືດພັນທັນຍາຫານເພີ່ມຫຼາຍຂຶ້ນ

[໓໑໑]　ແລະເມື່ອພຣະເຈົ້າແຜ່ນດິນ ຜູ້ອົງອາດຍິ່ງໃຫຍ່
ຊົງຍິນຍອມຕາມຄຳຂອງພາມເຫຼົ່ານັ້ນແລ້ວ
ຈຶ່ງຊົງເຮັດພິທີບູຊາຍັນ ໃນພິທີບູຊາຍັນນັ້ນ
ຮັບສັ່ງໃຫ້ຂ້າແມ່ງົວຫຼວງຫຼາຍຫຼາຍແສນໂຕ

[໓໑໒]　ແມ່ງົວນົມທັງຫຼາຍສະງົບສະງ່ຽມຄືແມ່ແບ້
ເຖິງຈະຖືກຄົນລ້ຽງຮີດນົມໃສ່ໝໍ້
ກໍບໍ່ໃຊ້ຕີນຫຼືເຂົາແນວໃດແນວໜຶ່ງເຮັດອັນຕະລາຍເລີຍ
ປານນັ້ນ ພຣະຣາຊາກໍຍັງຮັບສັ່ງໃຫ້ຈັບທີ່ເຂົາແລ້ວຂ້າດ້ວຍອາວຸດ

[໓໑໓]　ຍ້ອນການຂ້າງົວບູຊາຍັນນັ້ນ ເທວະດາ ພຣະພົມ
ພຣະອິນ ອະສູນ ແລະຜີເສື້ອສະມຸດ
ຕ່າງເປ່ງວາຈາປະນາມມະນຸດວ່າ
ບໍ່ມີຄຸນນະທຳ ຍ້ອນມີດທີ່ແທງແມ່ງົວ

[໓໑໔]　ແຕ່ກ່ອນນັ້ນມີຮ້າຍຢູ່ພຽງ ໓ ຊະນິດ ຄື
ພະຍາດຄວາມຢາກ ພະຍາດຄວາມຫິວ ແລະພະຍາດຊະຣາ
ແຕ່ຍ້ອນການທຳຮ້າຍບຽດບຽນປະສຸສັດ
ຈຶ່ງເຮັດໃຫ້ແຜ່ໂຣຄຮ້າຍເພີ່ມຂຶ້ນເຖິງ ໙໘ ຊະນິດ

[໓໑໕]　ການທຳຮ້າຍບຽດບຽນປະສຸສັດນີ້
ນັບເປັນການລົງທັນຊະນິດໜຶ່ງທີ່ຂາດຄຸນນະທຳ ມີມາແຕ່ເດີມແລ້ວ
ແມ່ງົວນົມທັງຫຼາຍທີ່ບໍ່ທຳຮ້າຍບຽດບຽນໃຜ ໆ ຕ່າງກໍຖືກຂ້າ
ພວກບູຊາຍັນກໍເສື່ອມຈາກທຳ

[໓໑໖]　ດັ່ງກ່າວມານີ້ ການຂ້າສັດບູຊາຍັນນີ້
ເປັນທຳນຽມທີ່ຕ່ຳຊາມ
ມີມາແຕ່ບູຮານ ຖືກວິນຍູຊົນຕິຕຽນ
ຄືວິນຍູຊົນຈະຕິຕຽນຄົນທີ່ເຮັດພິທີບູຊາຍັນ
ໂດຍວິທີນີ້ໃນທີ່ທຸກແຫ່ງທີ່ຕົນເຫັນ

[໓໑໗]　ເມື່ອທຳນຽມເກົ່າຂອງພາມເສື່ອມສູນໄປແນວນີ້ແລ້ວ
ຄົນວັນນະສູດແລະແພດກໍແຕກແຍກກັນ
ວັນນະກະສັດຈຳນວນຫຼາຍກໍແຕກແຍກກັນ

ພັນລະຍາກໍຍັງດູໝິ່ນສາມີ

[໓໑໗] ກະສັດ ພາມ ພ້ອມທັງແພດແລະສູດ
ທີ່ເປັນເຜົ່າພັນແຫ່ງພົມ
ທີ່ໄດ້ຮັບຄວາມຄຸ້ມຄອງຈາກວົງຕະກູນຂອງຕົນ
ຕ່າງບໍ່ຄຳນຶງເຖິງຊາດຊັ້ນວັນນະຕໍ່ໄປ
ລ້ວນຕົກຢູ່ໃນອຳນາດກາມມະຄຸນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພາມມະຫາສານເຫຼົ່ານັ້ນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດ ໂດຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ພວກຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳພວກຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ພາມມະນະທຳມິກະສູດທີ ໗ ຈົບ**

## ໘. ນາວາສູດ

## ວ່າດ້ວຍບຸກຄົນຜູ້ເປັນຄືເຮືອຂ້າມຟາກ

(ພຣະຜູ້ມີພຣະພາກເຈົ້າຕັດແກ່ພິກຂຸທັງຫຼາຍດັ່ງນີ້)

[໓໑໙] ບຸຣຸດຄວນບູຊາສັກກາຣະບຸກຄົນທີ່ຕົນຮຽນຮູ້ທຳຈົນເຂົ້າໃຈ
ຄືເທວະດາບູຊາພຣະອິນ ສັນນັ້ນ
ບຸກຄົນຜູ້ເປັນພະຫູສູດ ໄດ້ຮັບການບູຊາຈາກສິດແລ້ວ
ມີໃຈເອື້ອອາທອນໃນສິດນັ້ນ
ຍ່ອມອະທິບາຍທຳໃຫ້ເຂົ້າໃຈໄດ້ຢ່າງແຈ່ມແຈ້ງ

[໓໒໐] ບຸຣຸດຜູ້ມີປັນຍາ ບໍ່ຜະໝາດ
ຄົບບຸກຄົນຜູ້ເປັນພະຫູສູດເຊັ່ນນັ້ນ
ເຮັດທຳນັ້ນໃຫ້ມີປະໂຫຍດ ພິຈາຣະນາແລ້ວ

ປະຕິບັດທຳສົມຄວນແກ່ທຳ ຍ່ອມເປັນຜູ້ຮູ້ແຈ້ງ
ສະແດງທຳແກ່ຜູ້ອື່ນແລະເປັນຜູ້ລະອຽດ

[໓໘໑] ຜູ້ທີ່ຄົບບຸກຄົນຜູ້ມີຄຸນນະທຳໜ້ອຍ ເປັນຄົນພານ
ຍັງບໍ່ບັນລຸປະໂຫຍດຕົນ ທັງຍັງມີໃຈຣິດສະຫຍາ
ບໍ່ເຂົ້າໃຈທຳໃນສາດສະໜານີ້ໄດ້ຢ່າງແຈ່ມແຈ້ງ
ຍັງບໍ່ທັນໝົດຄວາມສົງໄສກໍສິ້ນຊີວິດໄປກ່ອນ

[໓໘໒] ປຽບຄືຄົນຂ້າມແມ່ນ້ຳທີ່ມີນ້ຳຫຼາຍ
ກຳລັງໄຫຼຖ້ວມມາ ມີແລວນ້ຳໄຫຼແຮງ
ຖືກພັດລອຍໄປຕາມກະແສນ້ຳສາເອງ
ຈະສາມາດຊ່ອຍພາຜູ້ອື່ນໃຫ້ຂ້າມໄປໄດ້ແນວໃດ ສັນໃດ

[໓໘໓] ບຸກຄົນຜູ້ຍັງບໍ່ເຂົ້າໃຈທຳຢ່າງແຈ່ມແຈ້ງ ກໍສັນນັ້ນ
ບໍ່ພິຈາລະນາຄວາມໝາຍແຫ່ງທຳໃຫ້ຖ່ອງແທ້
ໃນສຳນັກອາຈານຜູ້ເປັນພະຫູສູດ
ຕົນເອງຍັງບໍ່ຮູ້ແຈ້ງຈິງ ທັງຍັງບໍ່ໝົດຄວາມສົງໄສ
ຈະສາມາດສອນຜູ້ອື່ນໃຫ້ເພ່ງພິນິດທຳໄດ້ແນວໃດ

[໓໘໔] ຄົນລົງເຮືອທີ່ໝັ້ນຄົງແຂງແຮງ ມີພາຍແລະຖໍ່ຢູ່ພ້ອມ
ເປັນຜູ້ສະຫຼຽວສະຫຼາດ ຮອບຮູ້ ຊ່ຽວຊານການແລ່ນເຮືອນັ້ນ
ຍ່ອມສາມາດພາຜູ້ໂດຍສານຈຳນວນຫຼາຍໃນເຮືອນັ້ນ
ໃຫ້ຂ້າມໄປເຖິງຝັ່ງໄດ້ໂດຍປອດໄພ ແມ່ນສັນໃດ

[໓໘໕] ຜູ້ບັນລຸເຖິງຄວາມຮູ້ແຈ້ງ ອົບຣົມຕົນແລ້ວ
ເປັນພະຫູສູດ ມີສະພາບຈິດບໍ່ຫວັ່ນໄຫວ ກໍສັນນັ້ນ
ສາມາດສັ່ງສອນຜູ້ອື່ນທີ່ຕັ້ງໃຈຟັງແລະສົມບູນດ້ວຍອຸປະນິໄສໃຫ້ເພ່ງພິນິດໄດ້

[໓໘໖] ຍ້ອນແນວນັ້ນ ບຸກຄົນຈຶ່ງຄວນຄົບສັດຕະບຸຣຸດ
ຜູ້ມີປັນຍາ ເປັນພະຫູສູດ
ບຸກຄົນຜູ້ຄົບຫາສັດຕະບຸຣຸດນັ້ນ ຮູ້ແຈ່ມແຈ້ງເນື້ອຄວາມນັ້ນແລ້ວປະຕິບັດຢູ່
ເປັນຜູ້ເຂົ້າໃຈທຳໄດ້ຢ່າງແຈ່ມແຈ້ງ ເພິ່ງໄດ້ຮັບຄວາມສຸກ

**ນາວາສູດທີ ໗ ຈົບ**

# ໗. ກິງສີລະສູດ

## ວ່າດ້ວຍການຈະບັນລຸປະໂຫຍດສູງສຸດຕ້ອງປະພຶດຢ່າງໃດ

[໓໔໗] (ທ່ານພຣະສາຣີບຸດທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້)
ນໍຣະຊົນມີປົກກະຕິແນວໃດ ມີຄວາມປະພຶດແນວໃດ
ເພີ່ມພູນການເຮັດອັນໃດແດ່
ຈຶ່ງຊື່ວ່າ ເພິ່ງດຳລົງຕົນຢູ່ຢ່າງຖືກຕ້ອງ ແລະບັນລຸປະໂຫຍດສູງສຸດໄດ້

[໓໔໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ນໍຣະຊົນຄວນເປັນຜູ້ປະພຶດອ່ອນນ້ອມຕໍ່ຜູ້ໃຫຍ່[໑] ບໍ່ຣິດສະຫຍາ
ແລະຄວນຮູ້ຈັກການທີ່ຈະເຂົ້າໄປຫາຄູທັງຫຼາຍ
ຮູ້ຈັກຂະນະທີ່ຈະຟັງທຳມີກະຖາທີ່ທ່ານກ່າວ
ແລະຕັ້ງໃຈຟັງສຸພາສິດອື່ນ ໆ ຈາກທ່ານໂດຍເຄົາລົບ

[໓໔໙] ຄວນລຸດມານະ ນົບນອບ ອ່ອນນ້ອມ
ເຂົ້າໄປສູ່ສຳນັກຂອງຄູຕາມເວລາເໝາະສົມ
ຕັ້ງໃຈຣະນຶກເຖິງອັດຖະ ທຳ ສັງຍະມະ[໒] ພົມມະຈັນ
ພ້ອມທັງຍຶດຖືປະຕິບັດຕາມນັ້ນ

[໓໕໐] ຄວນເປັນຜູ້ພໍໃຈທຳ ຍິນດີໃນທຳ
ດຳລົງຢູ່ໃນທຳ ຮູ້ຈັກພິຈາລະນາທຳ
ບໍ່ຄວນກ່າວວາຈາທີ່ປະທຸດສະຮ້າຍທຳ
ຄວນໃຫ້ເວລາສິ້ນໄປກັບສຸພາສິດທີ່ແທ້ຈິງ[໓]

[໓໕໑] ການລະຄວາມສະນຸກມ່ວນຊື່ນ ການເວົ້າຊື່ນ
ຄວາມຮ່ຳໄຮເຮຮົນ ຄວາມຄຽດງ່າຍ
ການຫຼອກລວງທຳທ່າທຳຄວາມດີ
ຄວາມຍິນດີໃນປັດໄຈ ຄວາມຖືໂຕ
ການຊິງດີຊິງເດ່ນ ຄວາມຫຍາບຄາຍ
ແລະຄວາມໝົກມຸ້ນຢູ່ໃນກິເລດຄືນ້ຳຝາດຍ້ອມໃຈ
ຄວນເປັນຜູ້ປາສະຈາກຄວາມມົວເມົາ ດຳລົງສະຕິໝັ້ນຄົງຢູ່

[໓໕໒] ນໍຣະຊົນໃດເປັນຜູ້ປະພຶດຮີບຮ້ອນ[໑] ເປັນຜູ້ຜະໝາດ

ພຽງແຕ່ຮູ້ສຸພາສິດອັນເປັນສາຣະ
ແລະໄດ້ສະດັບສະມາທິອັນເປັນສາຣະໃນທຳທີ່ຮູ້ທົ່ວນັ້ນ
ປັນຍາແລະສຸຕະຍ່ອມບໍ່ຈະເລີນແກ່ນໍຣະຊົນນັ້ນເລີຍ໌

[໓໓໓] ສ່ວນນໍຣະຊົນຜູ້ຍິນດີໃນທຳທີ່ພຣະອະຣິຍະປະກາດແລ້ວ
ເປັນຜູ້ປະເສີດກວ່າຄົນນອກນີ້
ດ້ວຍກາຍ ວາຈາ ແລະໃຈ
ດຳລົງໝັ້ນຢູ່ໃນສັນຕິ ໂສຣັດຈະ ແລະສະມາທິ໌
ຈຶ່ງໄດ້ບັນລຸເຖິງທຳອັນເປັນສາຣະແຫ່ງສຸຕະແລະປັນຍາ

**ກິງສີລະສູດທີ ໙ ຈົບ**

## ໑໐. ອຸດຖານະສູດ

## ວ່າດ້ວຍການລຸກຂຶ້ນນັ່ງສະມາທິ

(ພຣະຜູ້ມີພຣະພາກເຈົ້າຕັດເຕືອນພິກຂຸທັງຫຼາຍດັ່ງນີ້)

[໓໓໔] ທ່ານທັງຫຼາຍຈົ່ງລຸກຂຶ້ນເທີ້ນ ຈົ່ງນັ່ງເທີ້ນ໌
ຄວາມຫຼັບຈະມີປະໂຫຍດອັນໃດແກ່ທ່ານທັງຫຼາຍ
ຜູ້ຮ້ອນຮົນດ້ວຍພະຍາດຄືກິເລດມີປະການຕ່າງ ໆ
ຖືກລູກສອນຄືຣາຄະເປັນຕົ້ນສຽບແທງຈົນຍ່ອຍຍັບຢູ່

[໓໓໕] ທ່ານທັງຫຼາຍຈົ່ງລຸກຂຶ້ນເທີ້ນ ຈົ່ງນັ່ງເທີ້ນ
ຈົ່ງບາກບັ່ນດຸໝັ່ນສຶກສາປະຕິບັດເພື່ອບັນລຸສັນຕິທຳກັນເທີ້ນ
ຢ່າໃຫ້ມັດຈຸຣາດຮູ້ວ່າ ທ່ານທັງຫຼາຍມົວແຕ່ຜະໝາດລຸ້ມຫຼົງ
ແລ້ວບັງຄັບໃຫ້ຫຼົງໄຫຼຢູ່ໃນອຳນາດເລີຍ

[໓໓໖] ທ່ານທັງຫຼາຍຈົ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາ
ເຊິ່ງເປັນເຫດໃຫ້ເທວະດາແລະມະນຸດ
ຜູ້ຍັງມີຄວາມຕ້ອງການຍຶດຕິດຢູ່
ຂະນະຢ່າໄດ້ລ່ວງເລີຍທ່ານທັງຫຼາຍໄປເລີຍ໌
ຍ້ອນເຫຼົ່າຊົນທີ່ປ່ອຍໃຫ້ຂະນະລ່ວງເລີຍໄປ
ຍ່ອມແອອັດກັນໃນນະຣົກ ເສົ້າໂສກຢູ່

[໓໓໗] ຄວາມຜະໝາດເປັນຄືທຸລີ
ຄວາມຜະໝາດທີ່ເກີດຊ້ຳແລ້ວຊ້ຳອີກ ກໍຈັດ ເປັນຄືທຸລີ
ກຸນລະບຸດຜູ້ເປັນບັນດິດຄວນຖອນລູກສອນຄືກິເລດຂອງຕົນ
ດ້ວຍຄວາມບໍ່ຜະໝາດແລະດ້ວຍວິດຊາ

**ອຸດຖານະສູດທີ 10 ຈົບ**

## ໑໑. ຣາຫຸລະສູດ

## ວ່າດ້ວຍພຣະພຸດທະໂອວາດທີ່ຕັດໂຜດພຣະຣາຫຸນ

[໓໓໘] (ພຣະຜູ້ມີພຣະພາກເຈົ້າຕັດຖາມທ່ານພຣະຣາຫຸນດັ່ງນີ້)
ຍ້ອນຄວາມສະໜິດສະໜົມກັນເກີນໄປ
ທ່ານນຶກດູໝິ່ນບັນດິດ[໑]ແດ່ບໍ
ການຊູທອນໄຟແກ່ມວນມະນຸດ[໒]
ທ່ານຍັງໃສ່ໃຈນອບນ້ອມຢູ່ບໍ

[໓໓໙] (ທ່ານພຣະຣາຫຸນທູນຕອບດັ່ງນີ້)
ເຖິງຈະມີຄວາມສະໜິດສະໜົມກັນຫຼາຍຂະໜາດພຽງໃດ
ຂ້າພຣະອົງກໍບໍ່ເຄີຍນຶກດູໝິ່ນບັນດິດເລີຍ
ການຊູທອນໄຟແກ່ມວນມະນຸດ
ຂ້າພຣະອົງກໍຍັງໃສ່ໃຈນອບນ້ອມຢູ່ສະເໝີ

[໓໔໐] (ພຣະຜູ້ມີພຣະພາກເຈົ້າຕັດໂອວາດດັ່ງນີ້)
ທ່ານລະການມະຄຸນ ໕ ເຊິ່ງໜ້າຮັກ ໜ້າອອນຊອນໃຈແລ້ວ
ອອກຈາກເຮືອນບວດດ້ວຍສັດທາ
ຈົ່ງເຮັດບ່ອນສຸດແຫ່ງທຸກເທີ້ນ[໓]

[໓໔໑] ທ່ານຈົ່ງຄົບກັນລະຍານະມິດ ຍິນດີເສນາສະນະອັນສະຫງັດ
ປາສະຈາກສຽງອຶກກະທຶກຟົດຟື້ນ
ຈົ່ງເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ

[໓໔໒] ທ່ານຈົ່ງຢ່າທຳຄວາມຢາກໃນປັດໄຈ ໔ ເຫຼົ່ານີ້ ຄື
ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດທີ່ເກີດຂຶ້ນ

ທ່ານຢ່າກັບມາຍັງໂລກນີ້ອີກເລີຍ

[໓໔໓] ທ່ານຈົ່ງເປັນຜູ້ສັງລວມໃນປາຕິໂມກ ແລະອິນຊີ ໕
ຈົ່ງຈະເລີນກາຍະຄະຕາສະຕິກຳມັດຖານ
ຈົ່ງເປັນຜູ້ເບື່ອໜ່າຍໃນສັງສາຣະວັດໃຫ້ຫຼາຍ

[໓໔໔] ຈົ່ງເວັ້ນສຸພະນິມິດອັນເປັນເຫດໃຫ້ເກີດຣາຄະສາ
ຈົ່ງຈະເລີນສະມາທິຈິດດ້ວຍອະສຸພະພາວະນາ
ຈົນຈິດມີອາລົມເປັນໜຶ່ງ ແລະຕັ້ງໝັ້ນດ້ວຍດີ໑

[໓໔໕] ຈົ່ງຈະເລີນກຳມັດຖານທີ່ບໍ່ມີນິມິດ ຈົ່ງລະມານານຸໄສກິເລດ
ຍ້ອນລະມານະໄດ້ນັ້ນເອງ ທ່ານກໍຈະເປັນຜູ້ສະງົບລະງັບ

ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າຕັດສອນທ່ານພຣະຣາຫຸນດ້ວຍຄາຖາເຫຼົ່ານີ້ຢູ່ເນືອງ ໆ ດ້ວຍປະການດັ່ງນີ້

**ຣາຫຸນສູດທີ ໑໑ ຈົບ**

## ໑໘. ວັງຄີສະສູດ໑

### ວ່າດ້ວຍພຸດທະພົດຕັດແກ້ຄວາມສົງໄສຂອງພຣະວັງຄີສະ

ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ອັກຄາລະວະເຈດີ ເຂດເມືອງອາລະວີ ສະໄໝນັ້ນ ພຣະນິໂຄທະກັບປະເຖຣະເຊິ່ງເປັນພຣະອຸປັດຊາຂອງທ່ານພຣະວັງຄີສະເພິ່ງຈະປະຣິນິບພານ ທີ່ອັກຄາລະວະເຈດີບໍ່ດົນ ຄັ້ງນັ້ນ ທ່ານພຣະວັງຄີສະຫຼີບຫຼີກຢູ່ໃນບ່ອນລັບ໒ໄດ້ເກີດຄວາມຄິດຄຳນຶງແນວນີ້ວ່າ ພຣະອຸປັດຊາຂອງເຮົາປະຣິນິບພານແລ້ວຫຼືວ່າຍັງບໍ່ປະຣິນິບພານ ເມື່ອເຖິງເວລາຄ່ຳ ທ່ານພຣະວັງຄີສະຈຶ່ງອອກຈາກບ່ອນຫຼີບຫຼີກ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະອົງ ຜູ້ຈະເລີນ ຂໍປະທານວະໂຣກາດ ຂ້າພຣະອົງຫຼີບຫຼີກຢູ່ໃນບ່ອນລັບໄດ້ເກີດຄວາມຄິດຄຳນຶງແນວນີ້ວ່າ ພຣະອຸປັດຊາຂອງເຮົາປະຣິນິບພານແລ້ວຫຼືວ່າຍັງບໍ່ປະຣິນິບພານ

ຄັ້ງນັ້ນ ທ່ານພຣະວັງຄີສະກໍລຸກຈາກອາສະນະ ຫົ່ມຈີວອນບ່ຽງບ່າ ປະຄອງອັນຊະລີໄປທາງພຣະຜູ້ມີພຣະພາກເຈົ້າແລ້ວໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

[໓໔໖] ຂ້າພຣະອົງຂໍທູນຖາມພຣະບໍຣົມມະສາດສະດາ
ຜູ້ມີພຣະປັນຍາຫຼາຍວ່າ
ພິກຂຸໃດມີຊື່ສຽງ ເຮືອງຍົດ໌
ຕັດຄວາມສົງໄສ ດັບກິເລດໄດ້ໃນປັດຈຸບັນຊາດນີ້
ໄດ້ປະຣິນິບພານທີ່ອັກຄາລະວະເຈດີວິຫານ

[໓໔໗] ຂ້າແດ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງເຫັນທຳອັນໝັ້ນຄົງ
ພິກຂຸນັ້ນເປັນພາມມາແຕ່ກຳເນີດ
ມີນາມທີ່ພຣະອົງຊົງປະທານໃຫ້ວ່າ ນິໂຄທະກັບປະ
ທ່ານທ່ຽວນອບນ້ອມ ມຸ້ງຫວັງຄວາມລຸດພົ້ນ ຜາຣົບຄວາມພຽນ

[໓໔໘] ຂ້າແດ່ພຣະອົງຜູ້ເປັນເຈົ້າສາກະຍະ ຜູ້ມີສະມັນຕະຈັກຂຸ
ຂ້າພຣະອົງທຸກອົງປາຖະໜາຈະຮູ້ເຖິງພຣະສາວົກອົງນັ້ນ
ຂ້າພຣະອົງທັງຫຼາຍພ້ອມທີ່ຈະງ່ຽງໂສດຟັງ
ພຣະອົງເປັນສາດສະດາຂອງຂ້າພຣະອົງທັງຫຼາຍ ພຣະອົງເປັນຜູ້ປະເສີດ

[໓໔໙] ຂ້າແດ່ພຣະອົງຜູ້ມີພຣະປັນຍາອັນເຕັມປ່ຽມ
ຂໍພຣະອົງໂຜດກຳຈັດຄວາມເຄືອບແຄງສົງໄສຂອງຂ້າພຣະອົງທັງຫຼາຍ
ໂຜດຕັດບອກພຣະນິໂຄທະກັບປະເຖຣະ
ຜູ້ປະຣິນິບພານແລ້ວນັ້ນ ໃຫ້ຂ້າພຣະອົງຮູ້ດ້ວຍເທີ້ນ
ຂ້າແດ່ພຣະອົງຜູ້ມີສະມັນຕະຈັກຂຸ
ຂໍພຣະອົງໂຜດຕັດບອກທ່າມກາງແຫ່ງຂ້າພຣະອົງທັງຫຼາຍເທີ້ນ
ຄືທ້າວສັກກະຜູ້ມີພຣະເນດເປັນພັນຕັດບອກແກ່ເຫຼົ່າເທວະດາ

[໓໕໐] ກິເລດເຄື່ອງຮ້ອຍຮັດເຫຼົ່າໃດເຫຼົ່າໜຶ່ງໃນໂລກນີ້
ເປັນທາງກໍ່ໃຫ້ເກີດຄວາມລຸ້ມຫຼົງ ເປັນຝ່າຍແຫ່ງຄວາມບໍ່ຮູ້
ເປັນມູນຖານແຫ່ງຄວາມເຄືອບແຄງສົງໄສ
ກິເລດເຄື່ອງຮ້ອຍຮັດເຫຼົ່ານັ້ນພໍມາເຖິງພຣະຕະຖາຄົດຜູ້ມີພຣະຈັກຂຸ
ມີພຣະຄຸນຍິ່ງກວ່ານໍຣະຊົນທັງຫຼາຍນີ້ແລ ຍ່ອມໝົດໄປ

[໓໕໑] ຖ້າພຣະຜູ້ມີພຣະພາກເຈົ້າຈະເປັນພຽງບຸຣຸດທຳມະດາ
ກໍຈະບໍ່ຊົງທຳລາຍກິເລດໄດ້
ຄືລົມພັດທຳລາຍກຸ່ມກ້ອນເພື້ອທີ່ໜາທຶບບໍ່ໄດ້ ສັນນັ້ນ
ໂລກທັງມວນທີ່ມືດຢູ່ແລ້ວກໍຍິ່ງຈະມືດໜັກລົງ

ນໍຣະຊົນທັງຫຼາຍມີພຣະສາຣີບຸດເປັນຕົ້ນ
ທີ່ຮຸ່ງເຮືອງຢູ່ແດ່ກໍຈະບໍ່ຮຸ່ງເຮືອງຫຼາຍ

[໓໕໔] ຂ້າແດ່ ພຣະຜູ້ມີພຣະພາກເຈົ້າຜູ້ຊົງພຽບພ້ອມດ້ວຍຄວາມພຽນ
ນັກປາດທັງຫຼາຍເປັນຜູ້ເຮັດແສງສະຫວ່າງໆໃຫ້ເກີດ
ຍ້ອນເຫດນັ້ນ ຂ້າພຣະອົງທັງຫຼາຍເຂົ້າໃຈພຣະອົງວ່າ
ຊົງເຮັດແສງສະຫວ່າງໃຫ້ເກີດເປັນແນ່ແທ້
ຂ້າພຣະອົງທັງຫຼາຍຮູ້ວ່າ ພຣະອົງຊົງເຫັນທຳທັງປວງ
ໄດ້ຢ່າງແຈ່ມແຈ້ງ ຈຶ່ງໄດ້ພາກັນມາເຝົ້າ
ຂໍພຣະອົງໂຜດປະກາດພຣະນິໂຄທະກັບປະເຖຣະ
ແກ່ຂ້າພຣະອົງທັງຫຼາຍໃນບ່ອນປະຊຸມນີ້ດ້ວຍເທີ້ນ

[໓໕໓] ພຣະອົງຊົງເປ່ງພຣະວາຈາທີ່ມ່ວນຈັບໃຈ
ທັງຊົງເປ່ງດ້ວຍພຣະສຸຣະສຽງກັງວານທີ່ເກີດແຕ່ພຣະນາສິກ
ທີ່ບຸນຍາທິການຕົກແຕ່ງມາດີແລ້ວ ໄດ້ຢ່າງວ້ອງໄວແຜ່ວເບົາ
ຄືພະຍາຫົງຄຳໂກ່ງຄໍຂັນຄ່ອຍ ໆ ທີ່ມ່ວນ
ຂ້າພຣະອົງທຸກອົງຕັ້ງໃຈແນ່ວແນ່
ຂໍຟັງພຣະດຳຣັດທີ່ມ່ວນຂອງພຣະອົງ

[໓໕໔] ຂ້າພຣະອົງຈະເປີດເຜີຍຄວາມເກີດແລະຄວາມຕາຍ
ທີ່ລະໄດ້ຢ່າງໝົດສິ້ນ
ຈະສະແດງບອກບາບທຳເຊິ່ງເປັນໂຕກຳຈັດ
ຍ້ອນບັນດາປຸຖຸຊົນທັງຫຼາຍ
ບຸກຄົນຜູ້ທີ່ເຮັດໄດ້ຕາມຄວາມພໍໃຈຕົນບໍ່ມີ
ແຕ່ຄົນທີ່ຮີບຕອງພິຈາລະນາຕາມພຣະຕະຖາຄົດທໍ່ນັ້ນ
ສາມາດທີ່ຈະຮູ້ຫຼືກ່າວທຳຢ່າງທີ່ຕົນຕ້ອງການໄດ້

[໓໕໕] ຂ້າແດ່ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະປັນຍາຫຼາຍ
ພຣະອົງຜູ້ຊົງມີພຣະປັນຍາຮຸ່ງເຮືອງ
ໄດ້ຕັດໄວຍາກອນທີ່ສົມບູນໄວ້ຢ່າງຖືກຕ້ອງແລ້ວ
ຂ້າພຣະອົງຂໍຖວາຍອັນຊະລີກຳຢ່າງນອບນ້ອມ
ພຣະອົງຊົງຮູ້ຄະຕິຂອງພຣະນິໂຄທະກັບປະເຖຣະ
ໂຜດຢ່າໃຫ້ຂ້າພຣະອົງຫຼົງຢູ່ເລີຍ

[໓໕໖] ຂ້າແດ່ພຣະອົງຜູ້ມີຄວາມພຽນຫຼາຍ
ພຣະອົງຊົງຮູ້ແຈ້ງອະຣິຍະທຳ[9]ທັງທີ່ເປັນໂລກຸດຕະຣະແລະໂລກິຍະ
ຊົງຮູ້ເຍີຍຍະທຳທັງໝົດ
ໂຜດຢ່າໃຫ້ຂ້າພຣະອົງຫຼົງຢູ່ເລີຍ
ຂ້າພຣະອົງຫວັງພຣະດຳຣັດຂອງພຣະອົງເປັນຢ່າງຍິ່ງ
ຄືຄົນຖືກຄວາມຮ້ອນແຜດເຜົາໃນລະດູຮ້ອນຕ້ອງການນ້ຳເປັນຢ່າງຍິ່ງ ສັນນັ້ນ
ຂໍພຣະອົງໂຜດເປ່ງສັດທາຍະຕະນະຄືສຸຕະເທີ້ນ

[໓໕໗] ພຣະນິໂຄທະກັບປະເຖຣະປະພຶດພົມມະຈັນເພື່ອປະໂຫຍດໃດ
ປະໂຫຍດນັ້ນຂອງທ່ານ ບໍ່ສູນເປົ່າບໍ
ທ່ານນິບພານດ້ວຍສະອຸປາທິເສສະນິບພານທາດ
ຫຼືນິບພານດ້ວຍອະນຸປາທິເສສະນິບພານທາດ
ຂ້າພຣະອົງທັງຫຼາຍຂໍຟັງເລື້ອງນັ້ນ

[໓໕໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ນິໂຄທະກັບປະເຖຣະນັ້ນໄດ້ຕັດຂາດຕັນຫາໃນນາມຮູບນີ້
ທັງຕັດກະແສແຫ່ງທຳຝ່າຍດຳ
ເຊິ່ງນອນຈົມຢູ່ໃນສັນດານມາດົນນານ
ຂ້າມພົ້ນຊາດແລະມໍລະນະໄດ້ຢ່າງໝົດສິ້ນ
ພຣະຜູ້ມີພຣະພາກເຈົ້າຜູ້ປະເສີດດ້ວຍພະລະທຳ ໕ ປະການ[6]
ໄດ້ຕັດໄວ້ດັ່ງນີ້

[໓໕໙] (ທ່ານພຣະວັງຄີສະເຖຣະຂາບທູນດັ່ງນີ້)
ຂ້າແດ່ພຣະອົງຜູ້ຊົງເປັນພຸດທະ
ຂ້າພຣະອົງນີ້ຟັງພຣະດຳຣັດຂອງພຣະອົງແລ້ວ ຍ່ອມເຫຼື້ອມໃສ
ຮູ້ມາວ່າ ເລື້ອງທີ່ຂ້າພຣະອົງທູນຖາມແລ້ວບໍ່ຂາດປະໂຫຍດ
ພຣະອົງຊົງເປັນພຸດທະເຈົ້າ ບໍ່ຊົງລວງຂ້າພຣະອົງແນ່ນອນ

[໓໖໐] ສາວົກຂອງພຣະພຸດທະອົງເວົ້າແນວໃດ ກໍເຮັດແນວນັ້ນ
ໄດ້ຕັດຕາໜ່າງຄືຕັນຫາທີ່ແຜ່ກວ້າງ ທັງໝັ້ນຄົງ
ຂອງມານຂີ້ສໍ້ໄດ້ເດັດຂາດ

[໓໖໑] ພຣະຜູ້ມີພຣະພາກເຈົ້າສົມຄວນທີ່ຈະຕັດວ່າ
ທ່ານພຣະນິໂຄທະກັບປະເຖຣະໄດ້ເຫັນມູນເຫດແຫ່ງອຸປາທານ

ລ່ວງພົ້ນບ້ວງມັດຈຸຣາດທີ່ຂ້າມໄດ້ແສນຍາກແລ້ວ

**ວັງຄີສະສູດທີ ໑໘ ຈົບ**

## ໑໓. ສໍາມາປະຣິບພາຊະນີຍະສູດ

## ວ່າດ້ວຍພິກຂຸຄວນລະເວັ້ນຢູ່ໃນໂລກໂດຍຖືກຕ້ອງ

[໓໖໘] (ພຣະພຸດທະເນຣະມິດທູນຖາມດັ່ງນີ້)
ຂ້າພຣະອົງຂໍທູນຖາມພຣະມຸນີຜູ້ມີປັນຍາຫຼາຍ
ຊຶ່ງຂ້າມໂອຄະໄດ້ແລ້ວປະຣິນິບພານ ມີພຣະທະໄທໝັ້ນຄົງ
ພິກຂຸນັ້ນບັນເທົາກາມທັງຫຼາຍ ອອກຈາກເຮືອນ (ມາບວດ) ແລ້ວ
ເພິ່ງລະເວັ້ນຢູ່ໃນໂລກໂດຍຖືກຕ້ອງໄດ້ແນວໃດ

[໓໖໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ພິກຂຸຜູ້ຕັດຂາດການເຊື່ອສິ່ງທີ່ເຫັນເປັນຕົ້ນວ່າ ເປັນມຸງຄຸນ
ການຍຶດຖືອຸກກາບາດຕົກ ຄວາມຝັນ ແລະການທໍານາຍລັກສະນະ
ລະສິ່ງທີ່ເຮັດໃຫ້ເກີດຜົນເສຍຕໍ່ມຸງຄຸນໄດ້ເດັດຂາດ
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໖໔] ພິກຂຸເພິ່ງກໍາຈັດຄວາມກໍາໜັດໃນກາມທັງຫຼາຍ
ທັງທີ່ເປັນຂອງມະນຸດ ແລະທີ່ເປັນທິບ
ພິກຂຸນັ້ນຕັດສະຣູທໍາແລ້ວ ກ້າວພົ້ນພົບໄດ້ແລ້ວ
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໖໕] ພິກຂຸກໍາຈັດຄວາມສັບສົ່ແລ້ວ
ເພິ່ງລະຄວາມໂກດ ຄວາມຂີ້ຖີ່
ພິກຂຸນັ້ນລະຄວາມຍິນດີແລະຄວາມຍິນຮ້າຍໄດ້ແລ້ວ
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໖໖] ພິກຂຸລະສິ່ງອັນເປັນທີ່ຮັກແລະບໍ່ເປັນທີ່ຮັກແລ້ວ
ບໍ່ຖືໝັ້ນ ຜູ້ບໍ່ມີຕັນຫາແລະທິດຖິອາໄສໃນພົບໃດ ໆ
ລຸດພົ້ນແລ້ວຈາກທໍາເປັນບ່ອນຕັ້ງແຫ່ງສັງໂຍດ
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໖໗] ພິກຂຸກຳຈັດສັນທະຣາຄະໃນສິ່ງທີ່ເພິ່ງຢຶດຖືທັງຫຼາຍ
ບໍ່ເຫັນຄວາມເປັນສາຣະໃນອຸປະທິທັງຫຼາຍ[១]
ພິກຂຸນັ້ນຜູ້ບໍ່ມີຕັນຫາແລະທິດຖິອາໄສ
ໃຜ ໆ ເພິ່ງນຳພາໄປບໍ່ໄດ້
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໖໘] ພິກຂຸຜູ້ບໍ່ຜິດພາດທາງກາຍ ວາຈາ ແລະໃຈ
ຮູ້ແຈ້ງເຊິ່ງທຳໂດຍຖືກຕ້ອງ ປາຖະໜາບົດຄືນິບພານຢູ່
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໖໙] ພິກຂຸຮູ້ຈັກເຄົາລົບນົບໄຫວ້ ບໍ່ຖືໂຕ ເຖິງຖືກດ່າວ່າກໍບໍ່ຄຽດ
ໄດ້ພັດຕາຫານທີ່ຜູ້ອື່ນຖວາຍປະຈຳແລ້ວກໍບໍ່ຜະໝາດມົວເມົາ
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໗໐] ພິກຂຸລະຄວາມໂລບແລະການະພົບເປັນຕົ້ນໄດ້ແລ້ວ
ເວັ້ນຂາດຈາກການຂ້າຟັນ ແລະການຄຸມຂັງຜູ້ອື່ນ
ຕັດຄວາມສົງໄສໄດ້ແລ້ວ ປາສະຈາກກິເລດຄືລູກສອນ
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໗໑] ພິກຂຸຜູ້ຮູ້ຂໍ້ປະຕິບັດທີ່ສົມຄວນແກ່ຕົນ
ຮູ້ແຈ້ງສັດຈະທຳຕາມຄວາມເປັນຈິງ
ບໍ່ບຽດບຽນສັດໂລກທຸກຊະນິດ
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໗໒] ພິກຂຸບໍ່ມີອະນຸໄສກິເລດໃດ ໆ ຖອນຮາກອະກຸສົນທຳໄດ້ໝົດສິ້ນ
ບໍ່ມີຄວາມຫວັງ ປາສະຈາກຕັນຫາໂດຍເດັດຂາດ
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໗໓] ພິກຂຸຜູ້ສິ້ນອາສະວະແລ້ວ ລະມານະໄດ້ເດັດຂາດ
ລ່ວງພົ້ນທາງແຫ່ງຣາຄະ[២]ທັງໝົດ
ເຝິກຕົນໄດ້ ດັບກິເລດລົງໄດ້ຢ່າງໝົດສິ້ນ ດຳລົງຕົນໝັ້ນຄົງ
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໗໔] ພິກຂຸມີສັດທາໝັ້ນຄົງ ເປັນຜູ້ໄດ້ສະດັບຢ່າງດີ

ເຫັນທາງປະຕິບັດອັນຖືກຕ້ອງ ເປັນນັກປາດ
ຜູ້ບໍ່ຄວນຕາມໄປໃນຝັກຝ່າຍມິດສາທິດຖິ
ກຳຈັດໂລພະ ໂທສະຄືຄວາມຂຸ່ນເຄືອງໃຈໄດ້
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໗໕] ພິກຂຸເອົາຊະນະກິເລດໄດ້ດ້ວຍອະຣະຫັດຕະມັກທີ່ມົດຈົດດີ
ບໍ່ມີກິເລດເຄື່ອງປິດບັງ ຊ່ຽວຊານໃນທຳທັງຫຼາຍ[១]
ເປັນຜູ້ເຖິງຝັ່ງ ໝົດຕັນຫາອັນເຮັດໃຫ້ຫວັ່ນໄຫວ
ມີຄວາມສະຫຼາດໃນຍານເປັນທີ່ດັບສັງຂານ
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໗໖] ພິກຂຸລ່ວງພົ້ນຄວາມກຳນົດທີ່ຖືວ່າເປັນຂອງເຮົາ
ໃນປັນຈະຂັນທັງທີ່ເປັນອະດີດແລະອະນາຄົດ
ມີປັນຍາບໍລິສຸດ ເປັນຜູ້ລຸດພົ້ນຈາກອາຍະຕະນະທັງປວງໄດ້ເດັດຂາດ
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໗໗] ພິກຂຸຮູ້ແຈ້ງສະພາວະທີ່ຄວນເຂົ້າເຖິງ ຈຶ່ງໄດ້ບັນລຸທຳ
ເຫັນການລະອາສະວະທັງຫຼາຍເປັນວິວະຕະ[២]
ບໍ່ຕິດຂ້ອງຢູ່ໃນພົບໃດ ໆ
ຍ້ອນອຸປະທິທັງປວງໝົດສິ້ນໄປແລ້ວ
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

[໓໗໘] (ພຣະພຸດທະເນຣະມິດທູນສະຫຼຸບດັ່ງນີ້)
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ
ທີ່ພຣະອົງຕັດມາທັງໝົດນັ້ນຖືກຕ້ອງຢ່າງແນ່ນອນ
ພິກຂຸໃດມີຄວາມປະພຶດແນວນີ້ຢູ່ປະຈຳ
ເຝິກຝົນຕົນແລ້ວ ເປັນຜູ້ຂ້າມສັງໂຍດແລະໂຍຄະທັງປວງໄດ້
ຊື່ວ່າ ລະເວັ້ນຢູ່ໃນໂລກໄດ້ໂດຍຖືກຕ້ອງ

**ສຳມາປະຣິບພາຊະນີຍະສູດທີ ໑໓ ຈົບ**

# ໑໔. ທຳມິກະສູດ

## ວ່າດ້ວຍພຣະພຸດທະພິດຕັດໂຜດທຳມິກະອຸປາສົກ

ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທຳມິກະອຸປາສົກພ້ອມດ້ວຍອຸປາສົກ ໕໐໐ ຄົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນ ດ້ວຍຄາຖາວ່າ

[໓໗໙] ຂ້າແດ່ພຣະໂຄດົມຜູ້ມີພຣະປັນຍາອັນເຕັມປ່ຽມ
ຂ້າພຣະອົງຂໍທູນຖາມພຣະອົງວ່າ
ບັນດາສາວົກທີ່ອອກຈາກເຮືອນບວດເປັນບັນພະຊິດ
ກັບສາວົກທີ່ເປັນອຸປາສົກຢູ່ຄອງເຮືອນນັ້ນ
ສາວົກທີ່ປະຕິບັດຕົນແນວໃດ ຈຶ່ງຊື່ວ່າ ເປັນສາວົກທີ່ດີ

[໓໘໐] ພຣະອົງທໍ່ນັ້ນຊົງຮູ້ແຈ້ງຄະຕິ[១]
ແລະຄວາມຂ້າມພົ້ນໄປຈາກຄະຕິ
ຂອງຊາວໂລກພ້ອມທັງເທວະໂລກ
ບໍ່ມີໃຜທີ່ເລັງເຫັນປະໂຫຍດໄດ້ສຸຂຸມລຸ້ມເລິກທໍ່ກັບພຣະອົງ
ບັນດິດທັງຫຼາຍພາກັນຂະໜານນາມພຣະອົງວ່າ
ເປັນພຣະພຸດທະເຈົ້າຜູ້ປະເສີດ

[໓໘໑] ພຣະອົງຜູ້ຊົງຮູ້ແຈ້ງເບີຍຍະທຳ ຊົງອະນຸເຄາະເຫຼົ່າສັດ
ໄດ້ຊົງປະກາດພຣະຍານແລະທຳທັງປວງ
ຂ້າແດ່ພຣະອົງຜູ້ມີສະມັນຕະຈັກຂຸ
ພຣະອົງບໍ່ມີກິເລດຄືເຄື່ອງປິດບັງອັນເປີດແລ້ວ
ຊົງປາສະຈາກມົນທິນ ຮຸ່ງເຮືອງຢູ່ໃນໂລກທັງປວງ

[໓໘໔] ພະຍາຊ້າງເອຣາວັນ[២]ຮູ້ວ່າພຣະຜູ້ມີພຣະພາກເຈົ້າ
ເປັນຜູ້ຊົງຊະນະບາບທຳໄດ້ແລ້ວ
ຈຶ່ງເຂົ້າໄປເຝົ້າພຣະອົງຮອດບ່ອນຢູ່
ພະຍາຊ້າງແມ່ນນັ້ນໄດ້ເປີກສາທູນຖາມບັນຫາກັບພຣະອົງ

ຟັງຄຳພະຍາກອນແລ້ວ ໄດ້ບັນລຸທຳ
ມີຄວາມຍິນດີເປ່ງສາທຸການແລ້ວຈາກໄປ

[໑໗໓] ເຖິງແມ່ນທ້າວເວດສະວັນ ເຊິ່ງມີພຣະນາມເດີມວ່າ ທ້າວກຸເວນ
ກໍຍັງສະເດັດເຂົ້າມາເຝົ້າຂາບທູນຖາມບັນຫາທຳ
ພຣະອົງແມ່ນຖືກທ້າວເວດສະວັນນັ້ນທູນຖາມ
ກໍຍັງຕັດຕອບຈົນພຣະອົງສະດັບແລ້ວມີຄວາມຊື່ນຊົມຍິນດີຈາກໄປ

[໑໗໔] ຊົນຕ່າງໆເຫຼົ່ານີ້ບໍ່ວ່າຈະເປັນພວກເດຍຣະຖີອາຊີວົກຫຼືນິຄົນ
ຜູ້ມັກກ່າວຍົກຕົນຂົ່ມຜູ້ອື່ນທັງໝົດ
ຍ່ອມບໍ່ເກີນເໜືອພຣະອົງດ້ວຍປັນຍາ
ຄືຄົນທີ່ຢຸດຢູ່ ບໍ່ທັນຄົນທີ່ຍ່າງໄວແລະບໍ່ຢຸດ ສັນນັ້ນ

[໑໗໕] ພວກພາມຜູ້ເຖົ້າ
ທີ່ມີປົກກະຕິກ່າວວາທະເຫຼົ່າໃດເຫຼົ່າໜຶ່ງກໍດີ
ແລະພາມເຫຼົ່າອື່ນທີ່ສຳຄັນຢູ່ວ່າ
ເຮົາທັງຫຼາຍຜູ້ມີປົກກະຕິເຮັດວາທະກໍດີ
ຊົນເຫຼົ່ານັ້ນທັງໝົດ ລ້ວນແຕ່ໄດ້ຮັບປະໂຫຍດຈາກພຣະອົງ

[໑໗໖] ຂ້າແດ່ພຣະຜູ້ມີພຣະພາກເຈົ້າ
ທຳນີ້ີທີ່ພຣະອົງຊົງສະແດງຢ່າງດີລະອຽດ
ແລະກໍ່ໃຫ້ເກີດສຸກຢ່າງແທ້ຈິງ
ຂ້າພຣະອົງທັງໝົດຕັ້ງໃຈຟັງທຳນັ້ນ
ຂ້າແດ່ພຣະພຸດທະເຈົ້າຜູ້ປະເສີດສຸດ
ຂໍພຣະອົງໂຜດຕັດພະຍາກອນບັນຫາ
ທີ່ພວກຂ້າພຣະອົງທູນຖາມແລ້ວດ້ວຍເທີ້ນ

[໑໗໗] ພິກຂຸພ້ອມທັງອຸປາສົກນີ້ທັງໝົດ
ຜູ້ນັ່ງປະຊຸມກັນ ຢູ່ບ່ອນນີ້ ເພື່ອຕ້ອງການຈະຟັງ
ຈະຕັ້ງໃຈຟັງທຳທີ່ພຣະຜູ້ມີ ພຣະພາກເຈົ້າ
ຜູ້ຊົງປາສະຈາກມົນທິນຕັດສະຮູ້ແລ້ວ
ຄືທວຍເທບຕ່າງຕັ້ງໃຈຟັງສຸພາສິດຂອງທ້າວວາສະວະ ສັນນັ້ນ

[໑໗໘] (ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຕັ້ງໃຈຟັງເຮົາ
ເຮົາຈະໃຫ້ທ່ານໄດ້ສະດັບທຳຄືຂໍ້ປະຕິບັດກຳຈັດກິເລດ
ແລະຂໍພວກທ່ານທັງໝົດຈົ່ງປະພຶດທຳນັ້ນ
ພິກຂຸຜູ້ມີປັນຍາພິຈາລະນາເຫັນປະໂຫຍດ
ຄວນປະຕິບັດຕົນຢູ່ທຸກອິລິຍາບົດທີ່ສົມຄວນແກ່ບັນພະຊິດ

[໓໗໙] ພິກຂຸບໍ່ຄວນອອກທ່ຽວໄປໃນເວລາວິການ
ແຕ່ຄວນທ່ຽວບິນທະບາດໃນໝູ່ບ້ານຕາມເວລາ
ຍ້ອນວ່າພິກຂຸຜູ້ອອກທ່ຽວໃນເວລາວິການ
ກິເລດເຄື່ອງຂ້ອງ°ຈະຄອບງຳ
ຍ້ອນແນວນັ້ນ ບຸກຄົນຜູ້ຮູ້ທັງຫຼາຍຈຶ່ງບໍ່ອອກທ່ຽວໃນເວລາວິການ

[໓໘໐] ພິກຂຸຄວນກຳຈັດຄວາມພໍໃຈໃນກາມມະຄຸນ ໕ ເຫຼົ່ານີ້ ຄື
ຮູບ ສຽງ ກິ່ນ ຣົດ ແລະສຳຜັດທີ່ເຮັດໃຫ້ເຫຼົ່າສັດຫຼົງມົວເມົາ
ເຂົ້າໄປສູ່ໂອກາດທີ່ຈະເພິ່ງບໍຣິໂພກອາຫານໃນເວລາເຊົ້າ ຕາມການ

[໓໘໑] ອັນໜຶ່ງ ພິກຂຸໄດ້ອາຫານບິນທະບາດມາສັນພາຍໃນເວລາແລ້ວ
ຄວນກັບໄປນັ່ງໃນບ່ອນສະງັດຕາມລຳພັງ
ຄວບຄຸມອັດຕະພາບຄືຈິດໄດ້ຢ່າງໝັ້ນຄົງແລ້ວ
ກຳນົດຈິດພິຈາລະນາອາລົມພາຍໃນ
ບໍ່ປ່ອຍຈິດໄປໃນອາລົມພາຍນອກ

[໓໘໒] ຖ້າແມ່ນພິກຂຸນັ້ນຈຳເປັນຈະຕ້ອງສົນທະນາກັບສາວົກອື່ນ ໆ
ຫຼືພິກຂຸອົງໃດອົງໜຶ່ງ ກໍຄວນສົນທະນາທຳທີ່ປະນີດ°ນັ້ນ
ບໍ່ຄວນກ່າວຄຳສອນສັບສໍ່ກະທົບວ່າຮ້າຍຜູ້ອື່ນ

[໓໘໓] ມີຄົນພວກໜຶ່ງມັກກ່າວວາທະໂຕ້ຖຽງກັນ
ເຮົາບໍ່ສັນເສີນຄົນພວກນັ້ນຜູ້ມີປັນຍາໜ້ອຍ
ຍ້ອນກິເລດເຄື່ອງຂ້ອງທີ່ເກີດຈາກການກ່າວວາຈາໂຕ້ຖຽງກັນນັ້ນ
ຈະຄອບງຳຄົນພວກນັ້ນ ຍ້ອນພວກເຂົາ (ເມື່ອໂຕ້ຖຽງກັນ)
ຍ່ອມເຮັດຈິດໃຫ້ໄກຈາກການປະຕິບັດສະມະຖະແລະວິປັດສະນາ

[໓໘໔] ສາວົກຜູ້ມີປັນຍາດີ ຟັງທຳທີ່ພຣະສຸຄົດພຸດທະເຈົ້າຊົງສະແດງແລ້ວ
ພິຈາລະນາອາຫານບິນທະບາດ ບ່ອນຢູ່ອາໄສ

ໄບ່ອນນອນບ່ອນນັ່ງ ນ້ຳໃຊ້ນ້ຳສັນ
ແລະການຊັກຜ້າສັງຄາຕິທີ່ສົກກະປົກໃຫ້ສະອາດແລ້ວຈຶ່ງໃຊ້ສອຍປັດໃຈ

[໓໙໕] ຍ້ອນແນວນັ້ນ ພິກຂຸຈຶ່ງບໍ່ຄວນເປັນຜູ້ຢຶດຕິດໃນສິ່ງເຫຼົ່ານີ້
ຄື ອາຫານບິນທະບາດ ບ່ອນນອນບ່ອນນັ່ງ ນ້ຳໃຊ້ນ້ຳສັນ
ແລະການຊັກຜ້າສັງຄາຕິທີ່ສົກກະປົກໃຫ້ສະອາດນີ້
ຄືຢາດນ້ຳບໍ່ຕິດເທິງໃບບົວ ສັນນັ້ນ

[໓໙໖] ຕໍ່ໄປນີ້ ເຮົາຈະບອກຂໍ້ປະຕິບັດຂອງຄະລິຫັດແກ່ພວກທ່ານ
ຄືສາວົກທີ່ເປັນຄະລິຫັດປະພຶດແນວໃດ
ຈຶ່ງຍັງປະໂຫຍດໃຫ້ສຳເລັດໄດ້
ຈິງຢູ່ ສາວົກທີ່ຍັງມີຄວາມຫວງແຫນໃນໄຮ່ນາເປັນຕົ້ນ
ບໍ່ສາມາດທີ່ຈະບັນລຸທຳຂອງພິກຂຸລ້ວນ ໆ ໄດ້

[໓໙໗] ສາວົກທີ່ເປັນຄະລິຫັດຍົກໂທດໃນສັດທຸກຈຳພວກ
ບໍ່ວ່າຈະເປັນສັດທີ່ຍັງຕື່ນຕົກໃຈ ແລະທີ່ໝັ້ນຄົງໃນໂລກແລ້ວ
ບໍ່ເພິ່ງຂ້າເອງ ບໍ່ເພິ່ງໃຊ້ໃຫ້ຜູ້ອື່ນຂ້າ ແລະບໍ່ເພິ່ງອະນຸຍາດໃຫ້ໃຜ ໆ ຂ້າ

[໓໙໘] ຈາກນັ້ນ ສາວົກທີ່ເປັນຄະລິຫັດ ຮູ້ຢູ່
ຄວນງົດເວັ້ນການຖືເອົາສິ່ງຂອງຕ່າງ ໆ ໃນທຸກຫົນທຸກແຫ່ງ ທີ່ເຈົ້າຂອງບໍ່ໄດ້ໃຫ້
ຄື ບໍ່ເພິ່ງລັກເອງ ບໍ່ເພິ່ງໃຊ້ໃຫ້ຜູ້ອື່ນລັກ ແລະບໍ່ເພິ່ງອະນຸຍາດໃຫ້ໃຜ ໆ ລັກ
ເພິ່ງງົດເວັ້ນການຖືເອົາສິ່ງຂອງທັງປວງທີ່ເຈົ້າຂອງບໍ່ໄດ້ໃຫ້ໂດຍເດັດຂາດ

[໓໙໙] ສາວົກທີ່ເປັນຄະລິຫັດ ຜູ້ເຂົ້າໃຈແຈ່ມແຈ້ງ
ຄວນງົດເວັ້ນພຶດຕິກຳອັນບໍ່ແມ່ນພົມມະຈັນ
ຄືຄົນຍ່າງຫຼີກຂຸມຖ່ານໄຟທີ່ມີໄຟລຸກເປັນແປວ ສັນນັ້ນ
ແຕ່ເມື່ອບໍ່ສາມາດປະພຶດພົມມະຈັນໄດ້
ກໍບໍ່ຄວນລ່ວງເກີນພັນລະຍາຂອງຜູ້ອື່ນ

[໔໐໐] ສາວົກຜູ້ຢູ່ໃນບ່ອນປະຊຸມ ຫຼືໃນບ່ອນສາທາລະນະຊົນ
ແລະຢູ່ກັບຄົນຄົນດຽວ ບໍ່ຄວນເວົ້າຕົວະ
ບໍ່ຄວນໃຊ້ໃຫ້ຜູ້ອື່ນເວົ້າຕົວະ ແລະບໍ່ຄວນອະນຸຍາດໃຫ້ໃຜ ໆ ເວົ້າຕົວະ
ຄວນງົດເວັ້ນຄຳເວົ້າທີ່ບໍ່ເປັນຈິງທັງໝົດ

[໔໐໑] ສາວິກາຜູ້ເປັນຄະລືຫັດບໍ່ຄວນປະພຶດການດື່ມນ້ຳເມົາ
ຄວນຍິນດີພໍໃຈທຳຄືການງົດເວັ້ນການດື່ມນ້ຳເມົານີ້
ບໍ່ຄວນຊັກຊວນຜູ້ອື່ນໃຫ້ດື່ມ ແລະບໍ່ຄວນອະນຸຍາດໃຫ້ໃຜ ໆ ດື່ມ
ຍ້ອນຮູ້ແຈ້ງເຖິງໂທດຂອງການດື່ມນ້ຳເມົານັ້ນວ່າ ມີຄວາມເປັນບ້າໃນທີ່ສຸດ

[໔໐໒] ຍ້ອນຄວາມເມົານັ້ນເອງ ຄົນພານທັງຫຼາຍຈຶ່ງເຮັດບາບຕ່າງ ໆ ໄດ້
ທັງຍັງຊັກຊວນຄົນອື່ນ ໆ ຜູ້ຜະໝາດໃຫ້ເຮັດນຳອີກ
ສາວິກາທີ່ເປັນຄະລືຫັດຈຶ່ງຄວນງົດເວັ້ນການດື່ມນ້ຳເມົາ
ທີ່ບໍ່ເປັນບໍ່ເກີດແຫ່ງຄວາມດີ ມີແຕ່ເຮັດໃຫ້ເປັນບ້າ ຫຼົງລືມ
ທີ່ພວກຄົນປັນຍາຊາມມັກດື່ມກັນນີ້

[໔໐໓] ສາວິກາທີ່ເປັນຄະລືຫັດບໍ່ຄວນຂ້າສັດ ບໍ່ຄວນລັກຊັບ
ບໍ່ຄວນເວົ້າຕົວະ ບໍ່ຄວນດື່ມນ້ຳເມົາ
ຄວນງົດເວັ້ນຈາກເມຖຸນທີ່ເປັນຄວາມປະພຶດບໍ່ປະເສີດ
ບໍ່ຄວນບໍຣິໂພກອາຫານໃນເວລາວິການໃນເວລາກາງຄືນ

[໔໐໔] ບໍ່ຄວນທັດຊົງດອກໄມ້ ບໍ່ຄວນລູບທາກາຍດ້ວຍຂອງຫອມ
ຄວນນອນເທິງຕຽງ ເທິງພື້ນ ຫຼືເທິງທີ່ທີ່ປູລາດໄວ້
ບັນດິດທັງຫຼາຍກ່າວວ່າ ອຸໂປສົດທີ່ປະກອບດ້ວຍອົງ ໘ ນີ້ແລ
ພຣະພຸດທະເຈົ້າຜູ້ເຖິງບ່ອນສຸດແຫ່ງທຸກຂົງປະກາດໄວ້[๑]

[໔໐໕] ແລະຕໍ່ໄປ ສາວິກາທີ່ເປັນຄະລືຫັດຜູ້ມີໃຈເຫຼື້ອມໃສ
ຄວນເຂົ້າຈຳອຸໂປສົດທີ່ປະກອບດ້ວຍອົງ ໘ ໃຫ້ບໍລິບູນດີ
ທຸກມື້ ໘ ຄ່ຳ ໑໔ ຄ່ຳ ຫຼື ໑໕ ຄ່ຳແຫ່ງປັກ
ແລະຕະຫຼອດປາຕິຫາຣິກາປັກ[໒]

[໔໐໖] ອັນດັບຕໍ່ໄປ ສາວິກາທີ່ເປັນຄະລືຫັດຜູ້ເຂົ້າຈຳອຸໂປສົດແຕ່ເຊົ້າ
ມີຈິດເຫຼື້ອມໃສ ເບີກບານໃຈຢູ່ເນືອງ ໆ ມີປັນຍາເຂົ້າໃຈແຈ່ມແຈ້ງ
ຄວນແຈກຈ່າຍຖວາຍເຂົ້ານ້ຳແດ່ພິກຂຸສົງຕາມສົມຄວນ

[໔໐໗] ສາວິກາທີ່ເປັນຄະລືຫັດນັ້ນ
ຄວນບຳລຸງລ້ຽງມານດາບິດາໂດຍຖືກຕ້ອງຕາມທຳ
ຄວນປະກອບການຄ້າຂາຍທີ່ຊອບທຳ[໑]
ເປັນຜູ້ບໍ່ຜະໝາດປະພຶດຂໍ້ວັດປະຕິບັດແຫ່ງຄະລືຫັດນີ້ຢູ່

ຍ່ອມໄປເກີດໃນໝູ່ເທບທີ່ຊື່ວ່າສະຍຳປະພາ[໒]

**ທຳມິກະສູດທີ ໑໔ ຈົບ**

**ຈູລະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ຣະຕະນະສູດ
໒. ຫິຣິສູດ
໕. ສູຈິໂລມະສູດ
໗. ພາມມະນະທຳມິກະສູດ
໙. ກິງສີລະສູດ
໑໑. ຣາຫຸລະສູດ
໑໒. ສຳມາປະຣິພພາຊະນີຍະສູດ
໓. ອາມະຄັນທະສູດ
໔. ມຸງຄຸນສູດ
໖. ທຳມະຈະຣິຍະສູດ
໘. ນາວາສູດ
໑໐. ອຸຕຖານະສູດ
໑໓. ວັງຄີສະສູດ
໑໔. ທຳມິກະສູດ

# ໒. ມະຫາວັກ

## ໝວດວ່າດ້ວຍເລື້ອງໃຫຍ່

## ໑. ປັບພັດຊາສູດ

### ວ່າດ້ວຍການສັນເສີນການບັນພະຊາ

(ທ່ານພຣະອານົນເຖຣະກ່າວສັນເສີນການບັນພະຊາ ຢູ່ພຣະເຊຕະວັນດັ່ງນີ້)

[໔໐໗] ຂ້າພະເຈົ້າຈັກສັນເສີນການບັນພະຊາ
ຄືທີ່ພຣະຜູ້ມີພຣະພາກເຈົ້າ
ຜູ້ມີພຣະຈັກຂຸຊົງບັນພະຊາ
ແລະຄືທີ່ພຣະອົງຊົງພິຈາລະນາຮອບຄອບ
ຈຶ່ງພໍພຣະທະໄທການບັນພະຊາ

[໔໐໘] ພຣະພຸດທະອົງຊົງເຫັນວ່າການຢູ່ຄອງເຮືອນນີ້
ຄັບແຄບ[໑] ເປັນບໍ່ເກີດທຸລີຄືກິເລດ

ແລະຊົງເຫັນວ່າ ການບັນພະຊາປອດໂປ່ງ
ຈຶ່ງສະເດັດອອກບັນພະຊາ

[໔໑໐] ພຣະພຸດທະອົງເມື່ອບັນພະຊາແລ້ວ
ຊົງເວັ້ນບາບກຳທາງກາຍແລະລະວະຈີທຸດຈະຣິດໄດ້
ຊົງຊຳຣະອາຊີວະໃຫ້ມົດຈົດ

[໔໑໑] ພຣະພຸດທະອົງຜູ້ມີພຣະລັກສະນະອັນປະເສີດທົ່ວພຣະວໍຣະກາຍ
ສະເດັດໄປເຖິງນະຄອນຣາດຊະຄື ຄືຣິບພະຊະນະຄອນ໌ ແຄວ້ນມະຄົດ
ໄດ້ສະເດັດທ່ຽວໄປເພື່ອຊົງບິນທະບາດ

[໔໑໒] ພຣະເຈົ້າພິມພິສານປະທັບຢືນຢູ່ເທິງຜາສາດ
ໄດ້ທອດພຣະເນດເຫັນພຣະພຸດທະເຈົ້າພຣະອົງນັ້ນ
ເມື່ອໄດ້ຊົງເຫັນພຣະພຸດທະອົງຊົງສົມບູນດ້ວຍພຣະລັກສະນະ
ຈຶ່ງໄດ້ຕັດດັ່ງນີ້ວ່າ

[໔໑໓] ທ່ານຜູ້ຈະເລີນທັງຫຼາຍ ພວກທ່ານຈົ່ງພິຈາລະນາເບິ່ງພິກຂຸອົງນີ້ເທີ້ນ
ພິກຂຸອົງນີ້ມີຮູບຮ່າງງາມ ສົມສ່ວນ ສະອາດ
ກ້າວຍ່າງໂດຍສັງລວມ ແລະທອດສາຍຕາພຽງຊົ່ວແອກ

[໔໑໔] ມີຈັກຂຸທອດລົງ ມີສະຕິ ພິກຂຸອົງນີ້
ບໍ່ຄືກັບຜູ້ອອກບວດຈາກຕະກູນຕ່ຳເລີຍ
ຣາດຊະທູດທັງຫຼາຍຈົ່ງຟ້າວໄປສືບເບິ່ງໃຫ້ຮູ້ວ່າ
ພິກຂຸອົງນີ້ຈະຈາຣິກໄປໃສ

[໔໑໕] ຣາດຊະທູດທີ່ພຣະເຈົ້າພິມພິສານຊົງສົ່ງໄປນັ້ນ
ໄດ້ຍ່າງນຳຫຼັງໄປເພື່ອສືບເບິ່ງວ່າ
ພິກຂຸອົງນັ້ນຈະຈາຣິກໄປໃສ ແລະພັກຢູ່ບ່ອນໃດ

[໔໑໖] ພຣະພຸດທະອົງສະເດັດໄປຕາມລຳດັບເຮືອນ ຊົງຄຸ້ມຄອງອິນຊີ
ຊົງສັງລວມດີແລ້ວ ມີສະຕິສຳປະຊັນຍະໝັ້ນຄົງ
ຊົງຮັບບິນທະບາດແຕ່ພໍປະມານ

[໔໑໗] ພຣະມຸນີສະເດັດທ່ຽວບິນທະບາດ
ແລ້ວສະເດັດອອກຈາກພຣະນະຄອນ

ສະເດັດຂຶ້ນໄປສູ່ປັນທະວະບັນພົດດ້ວຍຊົງດໍາຣິວ່າ
ຈະປະທັບຢູ່ ບ່ອນນັ້ນ

[໔໑໘] ຣາດຊະທູດທັງ ໓ ເຫັນພຣະພຸດທະອົງສະເດັດເຂົ້າໄປສູ່ທີ່ພັກ
ຈຶ່ງພາກັນເຂົ້າໄປເຝົ້າ ສ່ວນຣາດຊະທູດຄົນໜຶ່ງ
ກັບມາຂາບທູນພຣະເຈົ້າພິມພິສານວ່າ

[໔໑໙] ຂໍເດຊະ ມະຫາຣາດເຈົ້າ
ພິກຂຸອົງນັ້ນພັກຢູ່ທີ່ຖໍ້າດ້ານໜ້າພູປັນທະວະ
ຄືເສືອໂຄ່ງ ງົວອຸສະພະຣາດ ແລະຣາດຊະສີທີ່ຮ່ອມພູ ສັນນັ້ນ

[໔໒໐] ພຣະເຈົ້າພິມພິສານຊົງສະດັບຄໍາຂອງຣາດຊະທູດແລ້ວ
ຊົງຟ້າວສະເດັດໄປສູ່ພູປັນທະວະ
ໂດຍພຣະຣາດຊະພາຫະນະຊັ້ນເລີດ

[໔໒໑] ພຣະອົງໄດ້ສະເດັດໄປຈົນສຸດທາງທີ່ພຣະຣາດຊະພາຫະນະຈະສາມາດໄປໄດ້
ຈຶ່ງສະເດັດລົງຈາກພຣະຣາດຊະພາຫະນະ
ສະເດັດພຣະຣາດຊະດໍາເນີນຕໍ່ໄປດ້ວຍພຣະບາດ
ເຂົ້າໄປເຖິງປັນທະວະບັນພົດນັ້ນແລ້ວປະທັບນັ່ງ

[໔໒໒] ພຣະອົງເມື່ອປະທັບນັ່ງແລ້ວ
ໄດ້ຊົງສົນທະນາປາໄສເປັນທໍານຽມຣະນຶກເຖິງກັນ
ເມື່ອຜ່ານການສົນທະນາປາໄສແລ້ວໄດ້ຕັດດັ່ງນີ້ວ່າ

[໔໒໓] ພຣະຜູ້ເປັນເຈົ້າຍັງໜຸ່ມແໜ້ນ ເພິ່ງຜ່ານປະຖົມໄວເມື່ອບໍ່ດົນນີ້
ເຖິງພ້ອມດ້ວຍຄວາມຜຸດຜ່ອງແຫ່ງວັນນະ
ຄືກະສັດສຸຂຸມາລະຊາດ

[໔໒໔] ຂ້າພະເຈົ້າຈະມອບໂພຄະສົມບັດໃຫ້
ຂໍທ່ານຈົ່ງເປັນຈອມທັບຍັງໝູ່ພົນລະກາຍໃຫ້ງົດງາມ
ບໍຣິໂພກສົມບັດຢູ່ເທີ້ນ
ພຣະຜູ້ເປັນເຈົ້າຈົ່ງບອກຊາດກໍາເນີດດ້ວຍເທີ້ນ

[໔໒໕] (ພຣະພຸດທະອົງຕັດດັ່ງນີ້)
ມະຫາບໍພິດ ມີຊົນນະບົດແຫ່ງໜຶ່ງຕັ້ງຢູ່ໃນແຄວ້ນໂກສົນ

ກົງດ້ານຂ້າງທີ່ມະວັນຕະປະເທດ
ເປັນເມືອງທີ່ຮັ່ງມີ ປະຊາຊົນດຸໝັ້ນຂັນແຂງ

[໔໔໕] ອາຕະມາພາບມີນາມຕາມໂຄດວ່າອາທິດ
ມີນາມຕາມຊາດກຳເນີດວ່າສາກະຍະ
ບໍ່ປາຖະໜາການສຸກ
ຈຶ່ງອອກຈາກຕະກູນນັ້ນມາບວດເປັນບັນພະຊິດ

[໔໔໖] ອາຕະມາພາບເຫັນໂທດໃນການທັງຫຼາຍ
ເຫັນການອອກບວດວ່າເປັນທາງກະເສມ
ຈະຈາຣິກໄປເພື່ອພ່ຳເພັງພຽນ
ໃຈຂອງອາຕະມາພາບ ຍິນດີໃນການພ່ຳເພັງພຽນນັ້ນ

**ປັບພັດຊາສູດທີ ໑ ຈົບ**

## ໔. ປະທານະສູດ

## ວ່າດ້ວຍຄວາມພຽນອັນເດັດດ່ຽວ

(ພຣະຜູ້ມີພຣະພາກເຈົ້າຕັດແກ່ພິກຂຸທັງຫຼາຍດັ່ງນີ້)

[໔໔໗] ເຮົາຕັ້ງຈິດພ່ຳເພັງພຽນ ຕັ້ງໃຈ ເພ່ງພິນິດຢູ່
ເພື່ອບັນລຸທຳອັນເປັນແດນກະເສມຈາກໂຍຄະ
ຢູ່ທີ່ແຄມຝັ່ງແມ່ນ້ຳເນຣັນຊະຣານັ້ນ

[໔໔໘] ມານໄດ້ເຂົ້າມາຫາພ້ອມກັບກ່າວຄຳເວົ້າສະແດງຄວາມອີດູວ່າ
ທ່ານມີຮ່າງກາຍຜ່າຍຜອມ ມີຜິວພັນຊູບຊີດ ໃກ້ຈະຕາຍຢູ່ແລ້ວ

[໔໕໐] ທ່ານມີໂອກາດຕາຍເຖິງ ໑,໐໐໐ ສ່ວນ
ໂອກາດລອດຊີວິດມີພຽງສ່ວນດຽວເທົ່ານັ້ນ
ທ່ານເອີຍ ການທີ່ທ່ານມີຊີວິດຢູ່ນັ້ນດີແລ້ວ
ຍ້ອນເມື່ອມີຊີວິດຢູ່ ທ່ານກໍຈັກພ່ຳເພັງບຸນທັງຫຼາຍໄດ້

[໔໕໑] ທ່ານປະພຶດພົມມະຈັນ[១]ແລະບູຊາໄຟຢູ່
ກໍຊື່ວ່າສັ່ງສົມບຸນໄວ້ຫຼາຍ ທ່ານຈັກພ່ຳເພັງພຽນໄປເຮັດຫຍັງ

[໔໓໘] ທາງເພື່ອຄວາມພຽນດຳເນີນໄປເຖິງຍາກ ເຮັດໄດ້ຍາກ
ຍາກຍິ່ງທີ່ຈະກໍ່ຜົນສຳເລັດ
ມານໄດ້ຢືນກ່າວຄາຖາເຫຼົ່ານີ້ຢູ່ໃກ້ ໆ ເຮົາຜູ້ຈະເປັນພຸດທະ

[໔໓໙] ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບມານຜູ້ກ່າວແນວນັ້ນວ່າ
ມານຜູ້ມີບາບ ຜູ້ເປັນເຜົ່າພັນຂອງຄົນຜະໝາດ
ທ່ານມາບ່ອນນີ້ມີຄວາມປະສົງອັນໃດ

[໔໔໐] ເຮົາບໍ່ມີຄວາມຕ້ອງການບຸນແມ່ນແຕ່ໜ້ອຍ
ຄວາມຈິງ ທ່ານຜູ້ເປັນມານ
ຄວນໄປບອກແກ່ຄົນຜູ້ຕ້ອງການບຸນ

[໔໔໑] ຍ້ອນເຫດໃດ ທ່ານຈຶ່ງເຝົ້າພຽນຖາມເຮົາ
ຜູ້ມີທັງສັດທາ ຕະບະ ວິຣິຍະ ແລະປັນຍາ
ຜູ້ມີຈິດມຸ້ງໝັ້ນ ມີຄວາມເປັນຢູ່ແນວນີ້

[໔໔໒] ກະແສແມ່ນ້ຳທຸກສາຍ ລົມນີ້ສາມາດພັດໃຫ້ເຫືອດແຫ້ງໄດ້
ແຕ່ວ່າເລືອດຂອງເຮົາຜູ້ມີຈິດມຸ້ງໝັ້ນບໍ່ເຫືອດແຫ້ງໄປແມ່ນຈັກຢົດເລີຍ

[໔໔໓] ເມື່ອເລືອດກຳລັງເຫືອດແຫ້ງໄປ ບີ ສະເລດກໍກຳລັງເຫືອດແຫ້ງໄປນຳ
ແລະເມື່ອຊີ້ນກຳລັງຈະໝົດສິ້ນໄປ ແຕ່ຈິດຂອງເຮົາກໍຍິ່ງຜ່ອງໃສ
ສະຕິ ແລະປັນຍາກໍຜ່ອງໃສ ສະມາທິຂອງເຮົາກໍຍິ່ງຕັ້ງໝັ້ນຂຶ້ນໄປອີກ

[໔໔໔] ເຮົານັ້ນເຖິງຈະໄດ້ຮັບທຸກຂະເວທະນາອັນແຮງກ້າຢູ່ແນວນີ້
ຈິດກໍບໍ່ໄດ້ຫວນຄະນຶງເຖິງການທັງຫຼາຍເລີຍ
ທ່ານຈົ່ງຖ້າເບິ່ງພາວະທີ່ເຮົາເປັນສັດບໍລິສຸດ

[໔໔໕] ກິເລດການທັງຫຼາຍ ເຮົາຮຽກວ່າເສນາກອງທີ ໑ ຂອງທ່ານ
ຄວາມບໍ່ຍິນດີ ເຮົາຮຽກວ່າເສນາກອງທີ ໒ ຂອງທ່ານ
ຄວາມຫິວກະຫາຍ ເຮົາຮຽກວ່າເສນາກອງທີ ໓ ຂອງທ່ານ
ຕັນຫາ (ຄວາມທະຍານຢາກ) ເຮົາຮຽກວ່າເສນາກອງທີ ໔ ຂອງທ່ານ

[໔໔໖] ຖີນະມິດທະ (ຄວາມຫົດຫູ່ແລະງ່ວງເຫງົາ)
ເຮົາຮຽກວ່າເສນາກອງທີ ໕ ຂອງທ່ານ
ຄວາມຢ້ານ ເຮົາຮຽກວ່າເສນາກອງທີ ໖ ຂອງທ່ານ

ວິຈິກິດສາ (ຄວາມລັງເລສົງໄສ) ເຮົາຮຽກວ່າເສນາກອງທີ ໗ ຂອງທ່ານ
ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ແລະຖໍາພະ (ຄວາມຫົວດື້)
ເຮົາຮຽກວ່າເສນາກອງທີ ໘ ຂອງທ່ານ

[໔໔໑] ລາບ ຄວາມສັນເສີນ ສັກກາຣະ ແລະຍົດທີ່ໄດ້ມາທີ່ຜິດ ໆ
ເຮົາຮຽກວ່າເສນາກອງທີ ໙ ຂອງທ່ານ
ການຍົກຕົນແລະຂົ່ມຜູ້ອື່ນ ເຮົາຮຽກວ່າເສນາກອງທີ ໑໐ ຂອງທ່ານ

[໔໔໒] ມານເອີຍ ເສນາຂອງທ່ານຜູ້ມີທໍາດໍານີ້
ມີປົກກະຕິປະຫານສະມະນະພາມ
ຄົນຢ້ານເອົາຊະນະເສນານັ້ນບໍ່ໄດ້
ແຕ່ຄົນກ້າ ເອົາຊະນະເສນາມານໄດ້ແລ້ວຍ່ອມໄດ້ຮັບສຸກ[១]

[໔໔໓] ແມ່ນເຮົານີ້ກໍຮັກສາຫຍ້າມຸ້ງກະຕ່າຍໄວ້
ໜ້າຕິຕຽນ (ຖ້າ)ຊີວິດຂອງເຮົາ (ຈະປຣາໄຊ)
ເຮົາຕາຍສາໃນສົງຄາມປະເສີດກວ່າ
ປຣາໄຊແລ້ວເປັນຢູ່ຈະປະເສີດອັນໃດ

[໔໔໔] ສະມະນະພາມລາງພວກຕົກຢູ່ໃນອໍານາດເສນາຂອງທ່ານແລ້ວ
ຍ່ອມບໍ່ຜາກົດກຽດຕິຄຸນ
ແລະຍ່ອມບໍ່ຮູ້ທາງທີ່ເຫຼົ່າທ່ານຜູ້ມີຂໍ້ວັດປະຕິບັດດີດໍາເນີນໄປຢູ່

[໔໔໕] ເຮົາໄດ້ເຫັນມານຂີ່ຊ້າງເປັນພາຫະນະ
ນໍາເສນາອອກມາໂດຍຮອບທິດ
ຈຶ່ງກຽມຜະເຊີນໜ້າເພື່ອຈະຕໍ່ສູ້
ໂດຍໝັ້ນໃຈວ່າ ມານຢ່າຫວັງທີ່ຈະໃຫ້ເຮົາລຸກຈາກບ່ອນ

[໔໔໖] ຊາວໂລກພ້ອມທັງເທວະໂລກ
ບໍ່ສາມາດເອົາຊະນະເສນາຂອງທ່ານນັ້ນໄດ້
ແຕ່ເຮົາຈະໃຊ້ປັນຍາເປັນອາວຸດ
ທໍາລາຍເສນາທ່ານນັ້ນໃຫ້ພິນາດ
ຄືຄົນໃຊ້ກ້ອນຫີນທຸບພາຊະນະດິນ
ທັງທີ່ຍັງບໍ່ໄດ້ເຜົາແລະທີ່ເຜົາແລ້ວໃຫ້ແຕກໄປ ສັນນັ້ນ

[໔໔໗] ເຮົາຈັກຈະເລີນສຳມາສັງກັບປະໃຫ້ຊ່ຽວຊານ
ແລະຕັ້ງສະຕິໄວ້ຢ່າງໝັ້ນຄົງແລ້ວ
ທ່ຽວຈາຣິກແນະນຳພໍ່າສອນສາວົກຈຳນວນຫຼາຍໄປທຸກແວ່ນແຄວ້ນ

[໔໔໘] ສາວົກຜູ້ບໍ່ຜະໝາດເຫຼົ່ານັ້ນ ມີຈິດມຸ້ງໝັ້ນ
ປະຕິບັດຕາມຄຳສອນຂອງເຮົາ ເປັນຜູ້ໝົດຄວາມປາຖະໜາ
ກໍຈະເຂົ້າເຖິງສະຖານທີ່ເຊິ່ງເຫຼົ່າຊົນຜູ້ໄປແລ້ວ ບໍ່ເສົ້າໂສກ

[໔໔໙] (ມານກ່າວດັ່ງນີ້)
ຂ້າພະເຈົ້າໄດ້ສະກົດຮອຍຕາມພຣະຜູ້ມີພຣະພາກເຈົ້າດົນເຖິງ ໗ ປີ
ກໍຍັງຫາໂອກາດທີ່ຈະທຳລາຍພຣະສຳມາສຳພຸດທະເຈົ້າຜູ້ຊົງພຣະສິຣິບໍ່ໄດ້ເລີຍ

[໔໕໐] ກາໂຕໜຶ່ງບິນຢູ່ຮອບ ໆ ແທ່ນສິລາ
ທີ່ມີສີຄ້າຍມັນຂຸ້ນ ດ້ວຍຄິດວ່າ
ເຮົາກຳລັງຈະໄດ້ຂອງອ່ອນນຸ່ມໃນສິ່ງນີ້
ຄວາມຍິນດີພໍໃຈກໍຈະມີແກ່ເຮົາ
(ແຕ່ເມື່ອບໍ່ໄດ້ຄວາມພໍໃຈ ຮູ້ວ່າ ນີ້ຄືແທ່ນສິລາ ຈຶ່ງຫຼີກໄປ)[១]

[໔໕໑] ຂ້າພະເຈົ້າກໍເຊັ່ນດຽວກັນ ຕັ້ງໃຈວ່າ
ຈະມາລົບກວນກໍ່ຄວາມລຳຄານພຣະຫະໄທ
ໃຫ້ພຣະສະມະນະໂຄດົມເບື່ອສະເດັດລຸກໜີໄປ
ແຕ່ຂ້າພະເຈົ້າກັບບໍ່ໄດ້ຮັບຄວາມຍິນຍອມຈາກພຣະສຳມາສຳພຸດທະເຈົ້າ
ເກີດຄວາມທໍ້ແທ້ຈຶ່ງຫຼີກໄປ

[໔໕໒] ເມື່ອມານນັ້ນກຳລັງເສົ້າໂສກຫຼາຍ
ພິນທີ່ໜີບຢູ່ນັ້ນຈຶ່ງຕົກລົງຈາກຂີ້ແຮ້
ລຳດັບນັ້ນ ມານນັ້ນຜູ້ເສຍໃຈ
ໄດ້ສູນຫາຍໄປໃນບ່ອນນັ້ນເອງ

**ປະທານສູດທີ ໒ ຈົບ**

# ໓. ສຸພາສິດສູດ[1]

## ວ່າດ້ວຍວາຈາສຸພາສິດ ໔ ປະການ

ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ວ່າ

ພິກຂຸທັງຫຼາຍ ວາຈາທີ່ປະກອບດ້ວຍອົງ ໔ ປະການ ເປັນສຸພາສິດ ບໍ່ເປັນທຸບພາສິດ ບໍ່ມີໂທດ ແລະວິນຍູຊົນທັງຫຼາຍບໍ່ຕິຕຽນ

ວາຈາທີ່ປະກອບດ້ວຍອົງ ໔ ປະການ ອັນໃດແດ່ ຄື

ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້

໑. ກ່າວວາຈາສຸພາສິດແນວດຽວ ບໍ່ກ່າວວາຈາທຸບພາສິດ
໒. ກ່າວວາຈາທີ່ເປັນທຳແນວດຽວ ບໍ່ກ່າວວາຈາທີ່ບໍ່ເປັນທຳ
໓. ກ່າວວາຈາເປັນທີ່ຮັກແນວດຽວ ບໍ່ກ່າວວາຈາບໍ່ເປັນທີ່ຮັກ
໔. ກ່າວວາຈາສັດຈິງແນວດຽວ ບໍ່ກ່າວວາຈາເຫຼາະແຫຼະ

ພິກຂຸທັງຫຼາຍ ວາຈາທີ່ປະກອບດ້ວຍອົງ ໔ ປະການນີ້ແລ ເປັນສຸພາສິດ ບໍ່ເປັນ ທຸບພາສິດ ບໍ່ມີໂທດ ແລະວິນຍູຊົນທັງຫຼາຍບໍ່ຕິຕຽນ

ພຣະຜູ້ມີພຣະພາກເຈົ້າຜູ້ພຣະສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[໔໕໓] ສັດຕະບຸຣຸດກ່າວວ່າວາຈາສຸພາສິດເປັນວາຈາສູງສຸດ (ນັ້ນເປັນອົງທີ ໑)
ບຸກຄົນເພິ່ງກ່າວວາຈາທີ່ເປັນທຳ
ບໍ່ເພິ່ງກ່າວວາຈາທີ່ບໍ່ເປັນທຳ ນັ້ນເປັນອົງທີ ໒
ບຸກຄົນເພິ່ງກ່າວວາຈາເປັນທີ່ຮັກ
ບໍ່ເພິ່ງກ່າວວາຈາບໍ່ເປັນທີ່ຮັກ ນັ້ນເປັນອົງທີ ໓
ບຸກຄົນເພິ່ງກ່າວວາຈາສັດ
ບໍ່ເພິ່ງກ່າວວາຈາເຫຼາະແຫຼະ ນັ້ນເປັນອົງທີ ໔

ລຳດັບນັ້ນ ທ່ານພຣະວັງຄີສະລຸກຈາກອາສະນະ ຫົ່ມຈີວອນບ່ຽງບ່າ ຍື່ນປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າປະທັບ ແລ້ວໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງເຂົ້າໃຈພຣະພາສິດຂອງພຣະອົງແຈ່ມແຈ້ງ ຂ້າແດ່ພຣະສຸຄົດເຈົ້າ ຂ້າພຣະອົງເຂົ້າໃຈ ພຣະພາສິດຂອງພຣະອົງແຈ່ມແຈ້ງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ ວັງຄີສະ ທ່ານຈົ່ງເຂົ້າໃຈພາສິດຂອງເຮົາຢ່າງແຈ່ມແຈ້ງເທີ້ນ

ລຳດັບນັ້ນ ທ່ານພຣະວັງຄີສະໄດ້ກ່າວຊົມເຊີຍພຣະຜູ້ມີພຣະພາກເຈົ້າ ດ້ວຍຄາຖາທີ່ເໝາະສົມ ສະເພາະພຣະພັກວ່າ

[໔໕໔] ບຸກຄົນເພິ່ງກ່າວວາຈາທີ່ບໍ່ເປັນເຫດເຮັດຕົນໃຫ້ເດືອດຮ້ອນ
ແລະບໍ່ບຽດບຽນຜູ້ອື່ນ ວາຈານັ້ນເປັນວາຈາສຸພາສິດແທ້

[໔໕໕] ບຸກຄົນເພິ່ງກ່າວສະເພາະວາຈາເປັນທີ່ຮັກ ເປັນທີ່ຖືກໃຈຜູ້ຟັງ
ເພິ່ງເວັ້ນຄຳລາມົກທັງຫຼາຍສາ ກ່າວແຕ່ວາຈາເປັນທີ່ຮັກແກ່ຄົນອື່ນ

[໔໕໖] ວາຈາສັດເປັນວາຈາບໍ່ຕາຍ ນີ້ເປັນຂອງເກົ່າ
ສັດຕະບຸຣຸດລ້ວນດຳລົງໝັ້ນຢູ່ໃນສັດຈະທັງທີ່ເປັນອັດຖະ ແລະເປັນທຳ

[໔໕໗] ພຣະພຸດທະເຈົ້າຕັດພຣະວາຈາໃດ ອັນເປັນວາຈາກະເສມ
ເພື່ອການບັນລຸນິບພານ ເພື່ອເຮັດບ່ອນສຸດແຫ່ງທຸກ
ວາຈານັ້ນແລເປັນວາຈາປະເສີດກວ່າວາຈາທັງຫຼາຍ

**ສຸພາສິດສູດທີ ໓ ຈົບ**

# ໔. ສຸນທະຣິກະພາຣະທະວາຊະສູດ

## ວ່າດ້ວຍສຸນທະຣິກະພາຣະທະວາຊະພາມ

ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ແຄມຝັ່ງແມ່ນ້ຳສຸນທະຣິກາ ແຄວັນໂກສົນສະໄໝນັ້ນ ສຸນທະຣິກະພາຣະທະວາຊະພາມກຳລັງປະກອບພິທີບູຊາໄຟ ປົນເປີການບູຊາໄຟຢູ່ທີ່ແຄມຝັ່ງແມ່ນ້ຳສຸນທະຣິກາ ເມື່ອສຳເລັດເສັດສິ້ນພິທີແລ້ວກໍລຸກຈາກບ່ອນນັ່ງ ຫຼຽວເບິ່ງທິດທັງ ໔ ໂດຍຮອບດ້ວຍຄິດວ່າ ໃຜກັນຄວນບໍຣິໂພກເຄື່ອງບູຊາທີ່ເຫຼືອນີ້ ຫຼຽວໄປເຫັນ ພຣະຜູ້ມີພຣະ

ພາກເຈົ້າປະທັບນັ່ງຫົ່ມຄຸມພຣະວໍຣະກາຍຈົນເຖິງພຣະສຽນຢູ່ທີ່ເຫງົ້າໄມ້ຕົ້ນໜຶ່ງ ຈຶ່ງໃຊ້ມືຊ້າຍຖື ເຄື່ອງບູຊາທີ່ເຫຼືອ ມືຂວາຖືເຕົ້ານໍ້າເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່

ທັນໃດນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເປີດຜ້າຄຸມພຣະສຽນອອກ ຍ້ອນໄດ້ສະດັບສຽງ ຍ່າງຂອງສຸນທະຣິກະພາຣະທະວາຊະພາມຂະນະນັ້ນສຸນທະຣິກະພາຣະທະວາຊະພາມກ່າວຂຶ້ນ ວ່ານີ້ຄົນຫົວໂລ້ນ ນີ້ຄົນຫົວໂລ້ນ ຕັ້ງໃຈຈະຫັນຫຼັງກັບຈາກບ່ອນນັ້ນ ແຕ່ແລ້ວໄດ້ສຸກຄິດວ່າ ອັນ ແທ້ຈິງ ພາມລາງພວກໃນໂລກນີ້ກໍຫົວໂລ້ນຄືກັນ ຍ້ອນແນວນັ້ນ ເຮົາຄວນເຂົ້າໄປຖາມຊາດ ຕະກູນ ເມື່ອຄິດເຊັ່ນນັ້ນແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ກ່າວວ່າ ທ່ານມີຊາດກຳເນີດແນວໃດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຕອບສຸນທະຣິກະພາຣະທະວາຊະພາມດ້ວຍພຣະ ຄາຖາ ດັ່ງນີ້ວ່າ

[໔໕໗] ເຮົາບໍ່ແມ່ນພາມ ບໍ່ແມ່ນຣາດຊະໂອຣົດ ບໍ່ແມ່ນແພດ
ຫຼືຄົນອັນນະໃດອັນນະໜຶ່ງ
ເຮົາກຳນົດຮູ້ໂຄດຂອງປຸຖຸຊົນທັງຫຼາຍແລ້ວ
ບໍ່ມີຄວາມກັງວົນ ປະພຶດຕົນຢູ່ໃນໂລກດ້ວຍປັນຍາ

[໔໕໘] ເຮົານຸ່ງຫົ່ມໄຕຣຈີວອນ ບໍ່ມີເຮືອນ ແຖຜົມແລ້ວ
ຄວບຄຸມຕົນ ສະງົບລະງັບໄດ້
ບໍ່ຄຸກຄີກັບໝູ່ຄົນ ທ່ຽວຈາຣິກໄປໃນໂລກ
ການທີ່ທ່ານຖາມເຮົາເຖິງໂຄດວົງນັ້ນບໍ່ສົມຄວນເລີຍ

[໔໖໐] (ພາມທູນຖາມດັ່ງນີ້)
ພາມ ພາມທັງຫຼາຍນຳກັນທໍ່ນັ້ນ
ທີ່ຈະຖາມວ່າ ທ່ານເປັນພາມບໍ

[໔໖໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ຖ້າທ່ານຮຽກໂຕເອງວ່າພາມ
ແຕ່ມາສົນທະນາກັບເຮົາຜູ້ບໍ່ແມ່ນພາມ
ຍ້ອນແນວນັ້ນ ເຮົາຈະຖາມທ່ານເຖິງເລື້ອງສາວິຕຣີສັນ[໑]
ທີ່ມີ ໓ ບາດ ໒໔ ພະຍາງ

[໔໖໒] (ພາມທູນຖາມດັ່ງນີ້)

ລືສີ ມະນຸຊະ ກະສັດ ແລະພາມເປັນຈຳນວນຫຼາຍໃນໂລກນີ້
ອາໄສອັນໃດ ຈຶ່ງພາກັນບູຊາຍັນແກ່ເທວະດາທັງຫຼາຍ

[໔໗໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ເຮົາຂໍຊີ້ແຈ່ງວ່າ ບຸກຄົນຜູ້ເຖິງບ່ອນສຸດແຫ່ງທຸກ ຈົບເວດ
ເພິ່ງໄດ້ຮັບເຄື່ອງບູຊາໃນການແຫ່ງຍັນພິທີຂອງຜູ້ໃດ
ການປະກອບພິທີບູຊາຍັນຂອງຜູ້ນັ້ນ ຈຶ່ງຈະສຳເລັດຜົນຫຼາຍ

[໔໗໔] (ພາມຂາບທູນດັ່ງນີ້)
ການບູຊາຍັນຂອງຂ້າພະເຈົ້ານັ້ນ ຊື່ວ່າສຳເລັດຜົນແນ່ແທ້
ຍ້ອນໄດ້ພົບເຫັນບຸກຄົນ ຜູ້ຈົບເວດເຊັ່ນພຣະອົງ
ກໍຍ້ອນຍັງບໍ່ພໍ້ບຸກຄົນຜູ້ຊົງຄຸນເຊັ່ນກັບພຣະອົງ
ຄົນອື່ນ ໆ ຈຶ່ງໄດ້ກິນເຄື່ອງບູຊາ

[໔໗໕] (ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)
ພາມ ຍ້ອນແນວນັ້ນ ທ່ານຜູ້ມີຄວາມຕ້ອງການດ້ວຍປະໂຫຍດນີ້
ຈົ່ງເຂົ້າມາຖາມເທີ້ນ ທ່ານກໍຈະໄດ້ພົບບຸກຄົນຜູ້ສະງົບ
ກຳຈັດຄວາມໂກດໄດ້ ບໍ່ມີຄວາມທຸກ
ບໍ່ມີຄວາມຫວັງ ມີປັນຍາດີ ໃນໂລກນີ້ແນ່ນອນ

[໔໗໖] (ພາມທູນຖາມດັ່ງນີ້)
ຂ້າພະເຈົ້າຍິນດີໃນການບູຊາຍັນ ປາຖະໜາທີ່ຈະບູຊາຍັນ
ແຕ່ຂ້າພະເຈົ້າຍັງບໍ່ຮູ້ ຂໍພຣະອົງໂຜດຕັດສອນຂ້າພະເຈົ້າ
ໂຜດຕັດບອກສະຖານທີ່ທີ່ການບູຊາຍັນຈະສຳເລັດຜົນ
ໃຫ້ຂ້າພະເຈົ້າຮູ້ດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພາມ ຖ້າເປັນແນວນັ້ນ ທ່ານຈົ່ງຕັ້ງໃຈຟັງເທີ້ນ ເຮົາຈະສະແດງທຳແກ່ທ່ານ

[໔໗໗] ທ່ານຢ່າຖາມເຖິງຊາດຕະກູນເລີຍ
ຈົ່ງຖາມສະເພາະທຳທີ່ປະພຶດເທີ້ນ
ໄຟຍ່ອມເກີດຈາກໄມ້
ແມ່ນຜູ້ທີ່ເກີດໃນສະກຸນຕ່ຳກໍສາມາດເປັນມຸນີ
ມີປັນຍາ ກີດກັນອະກຸສົນວິຕົກໄດ້ດ້ວຍຫິຣິ
ເປັນບຸຣຸດອາຊາໄນໄດ້

[໔໖໘] ພາມຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ພຣະທັກຂີໄນຍະບຸກຄົນຜູ້ເຝິກຕົນຈົນບັນລຸສັດຈະ
ສົມບູນດ້ວຍການເຝິກອິນຊີ
ຜູ້ຈົບເວດ ຢູ່ຈົບພົມມະຈັນແລ້ວ

[໔໖໙] ພາມຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ລະການທັງຫຼາຍໄດ້ແລ້ວ ບໍ່ຢຶດໝັ້ນ
ສັງລວມຕົນເຄັ່ງຄັດ ທ່ຽວໄປຢູ່
ຄືກະສວຍທີ່ໄປກົງ

[໔໗໐] ພາມຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ປາສະຈາກຣາຄະ ມີອິນຊີໝັ້ນຄົງດີແລ້ວ
ລຸດພົ້ນຈາກກິເລດ ຄືດວງຈັນພົ້ນຈາກຣາຫູຈັບ ສັນນັ້ນ

[໔໗໑] ພາມຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ບໍ່ກ່ຽວຂ້ອງດ້ວຍກິເລດ ມີສະຕິຢູ່ທຸກເມື່ອ
ລະນາມຮູບທີ່ຢຶດຖືວ່າເປັນຂອງເຮົາໄດ້ແລ້ວ ທ່ຽວໄປຢູ່ໃນໂລກ

[໔໗໒] ຕະຖາຄົດລະການທັງຫຼາຍໄດ້
ມີປົກກະຕິຄອບງຳການທັງຫຼາຍ ທ່ຽວໄປ
ຮູ້ບ່ອນສຸດແຫ່ງຊາດແລະມໍລະນະ
ດັບກິເລດເຄື່ອງຮ້ອນຮົນໄດ້ເດັດຂາດແລ້ວ
ເປັນຜູ້ເຢືອກເຢັນຄືແມ່ນ້ຳ ຄວນແກ່ເຄື່ອງບູຊາ

[໔໗໓] ຕະຖາຄົດຜູ້ສະເໝີພຣະພຸດທະເຈົ້າທັງຫຼາຍ
ຢູ່ຫ່າງໄກຈາກບຸກຄົນຜູ້ບໍ່ສະເໝີທັງຫຼາຍ ມີປັນຍາຫາບ່ອນສຸດບໍ່ໄດ້
ເປັນຜູ້ອັນຕັນຫາແລະທິດຖິບໍ່ເປິເປື້ອນ ບໍ່ວ່າໃນໂລກນີ້ຫຼືໂລກໃດ ໆ
ຍ່ອມຄວນແກ່ເຄື່ອງບູຊາ

[໔໗໔] ຕະຖາຄົດ ບໍ່ມີມາຍາ ບໍ່ມີມານະ ປາສະຈາກໂລພະ

ບໍ່ຍຶດຖືສິ່ງວ່າເປັນຂອງເຮົາ
ບໍ່ມີຄວາມຫວັງ ກຳຈັດຄວາມໂກດ
ດັບກິເລດເຄື່ອງຮ້ອນຮົນໄດ້ເດັດຂາດ
ເປັນພາມຜູ້ລອຍບາບໄດ້ແທ້ຈິງ
ລະມົນທິນຄືຄວາມໂສກໄດ້ແລ້ວ ຍ່ອມຄວນແກ່ເຄື່ອງບູຊາ

[໔໗໕] ຕະຖາຄົດລະຕັນຫາແລະທິດຖິ
ອັນເປັນກິເລດນອນຈົມປະຈຳໃຈໄດ້ແລ້ວ
ບໍ່ມີຕັນຫາແລະທິດຖິເຄື່ອງຍຶດຖືໃດ ໆ
ຊື່ວ່າໝົດຄວາມຍຶດໝັ້ນໃນໂລກນີ້ຫຼືໂລກອື່ນ
ຍ່ອມຄວນແກ່ເຄື່ອງບູຊາ

[໔໗໖] ຕະຖາຄົດມີຈິດເປັນສະມາທິ ຂ້າມພົ້ນໂອຄະໄດ້ເດັດຂາດ
ແລະຮູ້ທຳດ້ວຍປັນຍາອັນປະເສີດ
ໝົດສິ້ນອາສະວະ ຊົງໄວ້ເຊິ່ງຮ່າງກາຍເປັນຮ່າງກາຍສຸດທ້າຍ
ຍ່ອມຄວນແກ່ເຄື່ອງບູຊາ

[໔໗໗] ພະອາສະວະ[๑]ແລະວາຈາຫຍາບຄາຍ
ຕະຖາຄົດກຳຈັດໃຫ້ສິ້ນໄດ້ ບໍ່ມີຢູ່
ເປັນຜູ້ຈົບເວດ ລຸດພົ້ນແລ້ວໃນທຳທັງປວງ[๒]
ຍ່ອມຄວນແກ່ເຄື່ອງບູຊາ

[໔໗໘] ຕະຖາຄົດຜູ້ລ່ວງພົ້ນກິເລດເຄື່ອງຂ້ອງ ບໍ່ມີທຳເຄື່ອງຂ້ອງ
ເມື່ອຄົນທົ່ວໄປຕິດຂ້ອງຍ້ອນມານະ ຕະຖາຄົດກຳຈັດມານະໄດ້
ກຳນົດຮູ້ທຸກພ້ອມທັງເຂດແລະບ່ອນຕັ້ງ ຍ່ອມຄວນແກ່ເຄື່ອງບູຊາ

[໔໗໙] ຕະຖາຄົດບໍ່ອີງອາໄສຄວາມຫວັງ ມີປົກກະຕິເຫັນຄວາມສະຫງັດ
ລ່ວງພົ້ນທິດຖິທີ່ຜູ້ອື່ນຮູ້ກັນ
ບໍ່ມີກິເລດເຄື່ອງຍຶດໜ່ວງໃດ ໆ ຍ່ອມຄວນແກ່ເຄື່ອງບູຊາ

[໔໘໐] ຕະຖາຄົດຮູ້ແຈ້ງທຳທັງທີ່ດີແລະຊົ່ວ
ກຳຈັດໃຫ້ສູນສິ້ນໄດ້ເດັດຂາດແລ້ວ ເປັນຜູ້ສະຫງົບ
ນ້ອມຈິດໄປໃນທຳເປັນທີ່ສິ້ນສຸດອຸປາທານ ຍ່ອມຄວນແກ່ເຄື່ອງບູຊາ

[໔໗໑] ຕະຖາຄົດມີປົກກະຕິເຫັນພາວະທີ່ສິ້ນສຸດການເກີດ
ກຳຈັດສັງໂຍດອັນເປັນທາງແຫ່ງຣາຄະໄດ້ໝົດສິ້ນ
ເປັນຜູ້ບໍລິສຸດ ບໍ່ມີໂທດ ປາສະຈາກມົນທິນ
ໝົດກິເລດເຄື່ອງເສົ້າໝອງ ຍ່ອມຄວນແກ່ເຄື່ອງບູຊາ

[໔໗໒] ຕະຖາຄົດບໍ່ພິຈາລະນາເຫັນຕົນໂດຍຄວາມເປັນຕົນ[๑]
ມີຈິດຕັ້ງໝັ້ນ ປະຕິບັດກົງ ດຳລົງຕົນໝັ້ນຄົງ ບໍ່ຫວັ່ນໄຫວ
ບໍ່ມີກິເລດຄືຕະປູຕຶງໃຈ ໝົດຄວາມສົງໄສ ຍ່ອມຄວນແກ່ເຄື່ອງບູຊາ

[໔໗໓] ຕະຖາຄົດບໍ່ມີເຫດເກີດໂມຫະໃດ ໆ
ມີປົກກະຕິເຫັນດ້ວຍຍານໃນທຳທັງປວງ
ຊົງໄວ້ເຊິ່ງຮ່າງກາຍເປັນຮ່າງກາຍສຸດທ້າຍ
ແລະບັນລຸພຣະສຳມາສຳໂພທິຍານທີ່ຍອດຢ້ຽມອັນກະເສມ
ດ້ວຍເຫດດັ່ງກ່າວມານີ້ ຕະຖາຄົດນັບວ່າມີຄວາມບໍລິສຸດທີ່ໜ້າບູຊາ
ຈຶ່ງຄວນແກ່ເຄື່ອງບູຊາ

[໔໗໔] (ພາມຂາບທູນດັ່ງນີ້)
ການບູຊາຂອງຂ້າພຣະອົງ
ຈະເປັນການບູຊາທີ່ຖືກຕ້ອງຢ່າງແນ່ແທ້
ຍ້ອນໄດ້ພົບບຸກຄົນ ຜູ້ຈົບເວດເຊັ່ນພຣະອົງ
ຂໍພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນພົມໂດຍປະຈັກ
ໂຜດຊົງຮັບ ຊົງບໍຣິໂພກເຄື່ອງບູຊາຂອງຂ້າພຣະອົງດ້ວຍເທີ້ນ

[໔໗໕] (ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)
ພາມ ເຮົາບໍ່ບໍຣິໂພກໂພຊະນະ
ທີ່ໄດ້ມາຍ້ອນການຂັບກ່ອມ
ທຳນັ້ນບໍ່ແມ່ນທຳຂອງຜູ້ພິຈາລະນາ
ພຣະພຸດທະເຈົ້າທັງຫຼາຍບໍ່ຮັບໂພຊະນະ
ທີ່ໄດ້ມາຍ້ອນການຂັບກ່ອມ
ເມື່ອທຳຍັງມີຢູ່
ການລ້ຽງຊີບແບບນີ້ກໍຍັງມີຢູ່

[໔໗໖] ອັນໜຶ່ງ ທ່ານຈົ່ງບຳລຸງພຣະຊິນາສົບ
ຜູ້ບໍລິສຸດບໍລິບູນ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

ມີຄວາມຄະນອງສະງົບແລ້ວ ດ້ວຍເຂົ້າແລະນ້ຳ
ຍ້ອນວ່າການບຳລຸງນັ້ນ
ເປັນນາບຸນຂອງຜູ້ສະແຫວງບຸນ

[໔໗໗] (ພາມຂາບທູນດັ່ງນີ້)
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍປະທານອະໄຣກາດ
ຂ້າພຣະອົງເຂົ້າເຖິງຄຳສອນຂອງພຣະອົງ
ຈຶ່ງຮູ້ແຈ້ງຕາມທີ່ພຣະອົງຕັດບອກແລ້ວ
ຂໍພຣະອົງໂຜດຕັດສະແດງບຸກຄົນ
ຜູ້ຄວນຈະບໍຣິໂພກທັກຂິນາທານຂອງຂ້າພຣະອົງ
ເຊິ່ງເປັນຜູ້ທີ່ຂ້າພຣະອົງກຳລັງສະແຫວງຫາໃນເວລາບູຊາຍັນ
ແກ່ຂ້າພຣະອົງດ້ວຍເທີ້ນ

[໔໗໘] (ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)
ບຸກຄົນໃດປາສະຈາກການຍາດແຍ່ງຊີງດີກັນ
ມີຈິດບໍ່ຂຸ່ນມົວ ລຸດພົ້ນແລ້ວຈາກກາມທັງຫຼາຍ
ກຳຈັດຖີນະມິດທະໄດ້ແລ້ວ

[໔໗໙] ກຳຈັດກິເລດສ່ວນສຸດອອກໄດ້
ຮູ້ເທົ່າທັນຊາດແລະມໍລະນະ
ເປັນມຸນີຜູ້ສົມບູນດ້ວຍປັນຍາ
ຖ້າບຸກຄົນເຊັ່ນນັ້ນມາເຖິງສະຖານທີ່ບູຊາຍັນຂອງທ່ານ

[໔໘໐] ທ່ານຢ່າເຮັດໜ້ານິ່ວຄິ້ວຂະໝວດ ຈົ່ງປະຄອງອັນຊະລີນອບນ້ອມ
ບູຊາດ້ວຍເຂົ້າແລະນ້ຳເທີ້ນ
ທັກຂິນາຂອງທ່ານຈຶ່ງຈະສຳເລັດໄດ້ດ້ວຍອາການແນວນີ້

[໔໘໑] (ພາມຂາບທູນດັ່ງນີ້)
ພຣະອົງເປັນພຣະພຸດທະເຈົ້າຜູ້ຄວນບູຊາໃນໂລກທັງປວງ
ເປັນນາບຸນອັນປະເສີດ ຍ່ອມຄວນຮັບເຄື່ອງບູຊາ
ທານທີ່ຖວາຍແກ່ພຣະອົງຍ່ອມມີຜົນຫຼາຍ

ລຳດັບນັ້ນ ສຸນທະຣິກະພາຣະທະວາຊະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ

ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດໂດຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂ້າພຣະອົງເພິ່ງໄດ້ບັນພະຊາ ເພິ່ງໄດ້ອຸປະສົມບົດໃນສຳນັກຂອງທ່ານພຣະໂຄດົມເທີ້ນ

ສຸນທະຣິກະພາຣະທະວາຊະພາມໄດ້ບັນພະຊາໄດ້ອຸປະສົມບົດໃນສຳນັກພຣະຜູ້ມີພຣະພາກເຈົ້າ ຯລຯ ຈຶ່ງເປັນອັນວ່າ ທ່ານພຣະສຸນທະຣິກະພາຣະທະວາຊະໄດ້ເປັນພຣະອະຣະຫັນອົງໜຶ່ງໃນບັນດາ ພຣະອະຣະຫັນທັງຫຼາຍ

**ສຸນທະຣິກະພາຣະທະວາຊະສູດທີ ໔ ຈົບ**

## ໕. ມາຄະສູດ

## ວ່າດ້ວຍມາຄະມານົບທູນຖາມບັນຫາ

ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພູຄິດຊະກູດ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ມາຄະມານົບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນ ທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ

ຂ້າແດ່ທ່ານພຣະໂຄດົມ ຄວາມຈິງ ຂ້າພຣະອົງເປັນທາຍົກ ເປັນທານະບໍດີ ຮູ້ຄວາມປະສົງຂອງຜູ້ຂໍ ຄວນແກ່ການຂໍ ຍ່ອມສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳ ເມື່ອສະແຫວງຫາໄດ້ແລ້ວກໍນຳໂພຄະຊັບທີ່ຕົນໄດ້ມາໂດຍຖືກຕ້ອງຕາມທຳແບ່ງໃຫ້ແກ່ປະຕິຄາຫົກຜູ້ຮັບທານ ໑ ຄົນແດ່ ໒ ຄົນແດ່ ໓ ຄົນແດ່ ໔ ຄົນແດ່ ໕ ຄົນແດ່ ໖ ຄົນແດ່ ໗ ຄົນແດ່ ໘ ຄົນແດ່ ໙ ຄົນແດ່ ໑໐ ຄົນແດ່ ໒໐ ຄົນແດ່ ໓໐ ຄົນແດ່ ໔໐ ຄົນແດ່ ໕໐ ຄົນແດ່ ໑໐໐ ຄົນແດ່ຫຼາຍກວ່າ ໑໐໐ ຄົນແດ່ ຂ້າແດ່ທ່ານພຣະໂຄດົມຜູ້ຈະເລີນ ເມື່ອຂ້າພຣະອົງ ໃຫ້ທານແນວນີ້ບູຊາແນວນີ້ ຈະໄດ້ຮັບບຸນຫຼາຍບໍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ມານົບ ແນ່ນອນທີ່ສຸດ ເມື່ອທ່ານໃຫ້ທານແນວນີ້ ບູຊາແນວນີ້ ຍ່ອມໄດ້ຮັບບຸນຫຼາຍ ມານົບ ບຸກຄົນຜູ້ເປັນທາຍົກ ເປັນທານະບໍດີ ຮູ້ຄວາມປະສົງ ຂອງຜູ້ຂໍ ຄວນແກ່ການຂໍ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳ ເມື່ອສະແຫວງຫາໄດ້ແລ້ວ

ກໍນໍາໂພຄະຊັບທີ່ຕົນໄດ້ມາໂດຍຖືກຕ້ອງຕາມທໍາແບ່ງໃຫ້ແກ່ປະຕິຄາຫົກຜູ້ຮັບທານ ໑ ຄົນແດ່ ໗ລ໗ ໑໐໐ ຄົນແດ່ ຫຼາຍກວ່າ ໑໐໐ ຄົນແດ່ ຍ່ອມໄດ້ຮັບບຸນຫຼາຍ

ລໍາດັບນັ້ນ ມາຄະມານົບໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາດັ່ງນີ້

[໕໙໔] ຂ້າພຣະອົງຂໍທູນຖາມທ່ານພຣະໂຄດົມ
ຜູ້ຊົງສະຫຼາດໃນຄໍາເວົ້າ ຜູ້ຊົງຜ້າກາສາວະພັດ
ບໍ່ຊົງຢຶດໝັ້ນ ສະເດັດທ່ຽວໄປຢູ່ວ່າ
ໃນໂລກນີ້ ຄະລຶຫັດຜູ້ໃດເປັນທານະບໍດີ ຄວນແກ່ການຂໍ
ເປັນຜູ້ຕ້ອງການບຸນ ມຸ້ງຫວັງບຸນ
ໃຫ້ເຂົ້າ ແລະນໍ້າ ບູຊາຊົນເຫຼົ່າອື່ນ
ການບູຊາຂອງຄະລຶຫັດຜູ້ນັ້ນທີ່ປະຕິບັດຢູ່ແນວນີ້ ຈະບໍລິສຸດໄດ້ແນວໃດ

[໕໙໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ມາຄະ ໃນໂລກນີ້ ຄະລຶຫັດຜູ້ໃດເປັນທານະບໍດີ ຄວນແກ່ການຂໍ
ເປັນຜູ້ຕ້ອງການບຸນ ມຸ້ງຫວັງບຸນ
ໃຫ້ເຂົ້າ ແລະນໍ້າ ບູຊາຊົນເຫຼົ່າອື່ນ
ຄະລຶຫັດຜູ້ເຊັ່ນນັ້ນ ເພິ່ງຍັງການບູຊາໃຫ້ສໍາເລັດໄດ້
ດ້ວຍພຣະທັກຂີໄນຍະບຸກຄົນທັງຫຼາຍ

[໕໙໖] (ມາຄະມານົບຂາບທູນດັ່ງນີ້)
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ
ຂໍພຣະອົງໂຜດຕັດບອກພຣະທັກຂີໄນຍະບຸກຄົນທັງຫຼາຍ
ແກ່ຂ້າພຣະອົງ ຜູ້ເປັນຄະລຶຫັດ ເປັນທານະບໍດີ
ຄວນແກ່ການຂໍ ຜູ້ຕ້ອງການບຸນ ມຸ້ງຫວັງບຸນ
ໃຫ້ເຂົ້າ ແລະນໍ້າ ບູຊາຊົນເຫຼົ່າອື່ນໃນໂລກນີ້ດ້ວຍເທີ້ນ

[໕໙໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ພາມຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ບໍ່ຂ້ອງດ້ວຍກິເລດ
ບໍ່ມີກິເລດເຄື່ອງກັງວົນ ຜູ້ບໍລິສຸດຄົບຖ້ວນ
ຜູ້ຄວບຄຸມຕົນໄດ້ ທ່ຽວໄປໃນໂລກ

[໔໙໖] ພາມຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ຕັດເຄື່ອງຜູກມັດຄືສັງໂຍດໄດ້ທັງໝົດ
ເຝິກຕົນແລ້ວ ມີຈິດລຸດພົ້ນ ບໍ່ມີທຸກ ບໍ່ມີຄວາມຫວັງ

[໔໙໗] ພາມຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ລຸດພົ້ນຈາກສັງໂຍດທັງປວງ
ເຝິກຕົນແລ້ວ ມີຈິດລຸດພົ້ນ ບໍ່ມີທຸກ ບໍ່ມີຄວາມຫວັງ

[໔໙໘] ພາມຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ລະຣາຄະ ໂທສະ ໂມຫະໄດ້ແລ້ວ
ສິ້ນອາສະວະ ຢູ່ຈົບພົມມະຈັນແລ້ວ

[໔໙໙] ພາມຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ບໍ່ມີມາຍາ ບໍ່ມີມານະ
ສິ້ນອາສະວະ ຢູ່ຈົບພົມມະຈັນແລ້ວ

[໕໐໐] ພາມຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ປາສະຈາກໂລພະ
ບໍ່ຍຶດຖືວ່າເປັນຂອງເຮົາ ບໍ່ມີຄວາມຫວັງ
ສິ້ນອາສະວະ ຢູ່ຈົບພົມມະຈັນແລ້ວ

[໕໐໑] ພາມຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ມີຈິດບໍ່ນ້ອມໄປໃນຕັນຫາທັງຫຼາຍ
ຂ້າມໂອຄະໄດ້ ບໍ່ຍຶດຖືວ່າເປັນຂອງເຮົາ ທ່ຽວໄປ

[໕໐໒] ພາມຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ບໍ່ມີຕັນຫາ[໑]ເປັນເຫດໃຫ້ເກີດພົບໃໝ່
ໃນໂລກໃດ ໆ ຄືໃນໂລກນີ້ຫຼືໂລກອື່ນ

[໕໐໓] ພານຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ລະການທັງຫຼາຍໄດ້ແລ້ວ
ບໍ່ມີຄວາມຍຶດຖື ສັງລວມຕົນດີແລ້ວ ທ່ຽວໄປ
ຄືກະສວຍທີ່ໄປກົງ ສັນນັ້ນ

[໕໐໔] ພານຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ປາສະຈາກຣາຄະ ມີອິນຊີໝັ້ນຄົງດີແລ້ວ
ລຸດພົ້ນຈາກກິເລດ ຄືດວງຈັນພົ້ນຈາກຣາຫູຈັບ ສັນນັ້ນ

[໕໐໕] ພານຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ສະງົບ ຜູ້ປາສະຈາກຣາຄະ ບໍ່ມີຄວາມຄຽດ
ຜູ້ບໍ່ມີຄະຕິ ຍ້ອນລະຂັນ ໕ ໃນໂລກນີ້ໄດ້ແລ້ວ

[໕໐໖] ພານຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ລະຊາດແລະມໍລະນະໄດ້ໝົດສິ້ນແລ້ວ
ລ່ວງພົ້ນຄວາມສົງໄສທຸກຢ່າງ

[໕໐໗] ພານຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ມີຕົນເປັນບ່ອນເພິ່ງ ບໍ່ມີກິເລດເຄື່ອງກັງວົນ
ລຸດພົ້ນແລ້ວໃນທໍາທັງປວງ ທ່ຽວໄປໃນໂລກ

[໕໐໘] ພານຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ
ແກ່ເຫຼົ່າຊົນຜູ້ຮູ້ແຈ້ງໃນຂັນແລະອາຍະຕະນະເປັນຕົ້ນ
ຕາມສະພາວະທີ່ເປັນຈິງວ່າ
ນີ້ເປັນຊາດສຸດທ້າຍ ບໍ່ມີພົບໃໝ່ອີກຕໍ່ໄປ

[໕໐໙] ພານຜູ້ມຸ້ງບຸນ ຄວນບູຊາ
ຈັດຖວາຍເຄື່ອງວັດຖຸທານໃຫ້ເໝາະແກ່ການ

ແກ່ທ່ານຜູ້ຈົບເວດ ຍິນດີໃນຊານ
ມີສະຕິ ບັນລຸສຳໂພທິຍານ
ເປັນສະຣະນະຂອງເທວະດາແລະມະນຸດຈຳນວນຫຼາຍ

[໕໑໐] (ມາຄະມານົບຂາບທູນດັ່ງນີ້)
ຄຳຖາມຂອງຂ້າພຣະອົງບໍ່ເປົ່າປະໂຫຍດແນ່ແທ້
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ພຣະອົງຕັດບອກ
ພຣະທັກຂີໄນຍະບຸກຄົນທັງຫຼາຍແກ່ຂ້າພຣະອົງແລ້ວ
ຄວາມຈິງ ພຣະອົງຊົງຮູ້ເຍີຍຍະທຳທັງໝົດ
ໃນໂລກນີ້ຢ່າງຖ່ອງແທ້
ທຳນີ້ພຣະອົງຊົງຮູ້ແຈ້ງແລ້ວ

[໕໑໑] ຂ້າແດ່ພຣະຜູ້ມີພຣະພາກເຈົ້າ
ຂໍພຣະອົງໂຜດຕັດບອກຍັນຍະສຳປະທາ[១]
ແກ່ຂ້າພຣະອົງຜູ້ເປັນຄະລືຫັດ ເປັນທານະບໍດີ ຄວນແກ່ການຂໍ
ຜູ້ຕ້ອງການບຸນ ມຸ້ງຫວັງບຸນ ໃຫ້ເຂົ້າ ແລະນ້ຳ
ບູຊາຊົນເຫຼົ່າອື່ນໃນໂລກນີ້ດ້ວຍເທີ້ນ

[໕໑໒] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ມາຄະ ທ່ານເມື່ອຈະບູຊາກໍຈົ່ງບູຊາເທີ້ນ
ແລະຈົ່ງເຮັດຈິດໃຫ້ຜ່ອງໃສໃນການທັງປວງ
ຍັນຍ່ອມເປັນອາລົມໜ່ວງຈິດຂອງຜູ້ກຳລັງບູຊາບຸກຄົນ
ຜູ້ມີຈິດຕັ້ງໝັ້ນໃນຍັນນີ້ແລ້ວ ຍ່ອມລະໂທດ[២]ໄດ້

[໕໑໓] ອັນໜຶ່ງ ບຸກຄົນນັ້ນປາສະຈາກຣາຄະແລ້ວ ຄວນກຳຈັດໂທສະ
ຈະເລີນເມດຕາຈິດທົ່ວໄປແກ່ສັດທຸກຈຳພວກ
ບໍ່ຜະໝາດທັງກາງເວັນແລະກາງຄືນຢູ່ປະຈຳ
ຊື່ວ່າຍ່ອມແຜ່ອັປປະມັນຍາ[៣]ໄປທົ່ວທິດ

[໕໑໔] (ມາຄະມານົບທູນຖາມດັ່ງນີ້)
ໃຜ ຊື່ວ່າບໍລິສຸດ ລຸດພົ້ນ ແລະຊື່ວ່າຍັງຕິດຢູ່
ບຸກຄົນຈະໄປໃຫ້ເຖິງພົມມະໂລກດ້ວຍຕົນໄດ້ແນວໃດ
ຂ້າແດ່ພຣະມຸນີ ຂ້າພຣະອົງບໍ່ຮູ້ ຈຶ່ງທູນຖາມ
ຂໍພຣະອົງໂຜດຕັດບອກ

ກໍພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະພົມ
ຂ້າພຣະອົງເຫັນໂດຍປະຈັກໃນມື້ນີ້
ຍ້ອນພຣະອົງເປັນຜູ້ສະເໝີດ້ວຍພົມຂອງຂ້າພຣະອົງຈິງ ໆ
ຂ້າແດ່ພຣະອົງຜູ້ມີຄວາມຮຸ່ງເຮືອງ
ບຸກຄົນຈະເຂົ້າເຖິງພົມມະໂລກໄດ້ແນວໃດ

[໕໑໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ມາຄະ ບຸກຄົນຜູ້ບູຊາຍັນຍະສຳປະທາຄົບທັງ ໓ ການເຊັ່ນນັ້ນ
ເພິ່ງຍັງການບູຊາໃຫ້ບໍລິສຸດດ້ວຍພຣະທັກຂິໄນຍະບຸກຄົນທັງຫຼາຍ
ເຮົາຮຽກບຸກຄົນຜູ້ຄວນແກ່ການຂໍ
ບູຊາຖວາຍວັດຖຸທານແນວນັ້ນວ່າ
ເຂົ້າເຖິງພົມມະໂລກໄດ້ແນ່ນອນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ມາຄະມານົບໄດ້ຂາບທູນວ່າ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນນ່ອນຫຼາຍ ໆລໆ ຂໍພຣະອົງຈົ່ງຊົງຈຳ ຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ມາຄະສູດທີ ໕ ຈົບ**

## ໖. ສະພິຍະສູດ

## ວ່າດ້ວຍສະພິຍະປະຣິພາຊົກທູນຖາມບັນຫາ

ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເວລຸວັນ ກະລັນທະກະນິວາປະສະຖານ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ເທວະດາຜູ້ເຄີຍເປັນສາໂລຫິດ°ຂອງສະພິຍະປະຣິພາຊົກໄດ້ຕັ້ງບັນຫາພ້ອມກ່າວວ່າ ສະພິຍະ ສະມະນະຫຼືພາມຜູ້ໃດ ຖືກທ່ານຖາມບັນຫາເຫຼົ່ານີ້ແລ້ວ ພະຍາກອນໄດ້ ທ່ານຄວນປະພຶດພົມມະຈັນໃນສຳນັກຂອງສະມະນະຫຼືພາມຜູ້ນັ້ນເທີ້ນ

ລຳດັບນັ້ນ ສະພິຍະປະຣິພາຊົກຮຽນບັນຫາເຫຼົ່ານັ້ນໃນສຳນັກຂອງເທວະດານັ້ນ ແລ້ວເຂົ້າ ໄປຫາສະມະນະພາມທັງຫຼາຍຜູ້ເປັນເຈົ້າໝູ່ ເຈົ້າຄະນະ ເປັນຄະນາຈານ ມີຊື່ສຽງ ມີກຽດ ຕິຍົດ ເປັນເຈົ້າລັດທິ ເປັນຜູ້ທີ່ຄົນສ່ວນຫຼາຍຍ້ອງຍໍວ່າດີເລີດ ຄື ປູຣະນະ ກັດສະປະ ມັກຂະລີ ໂຄ

ສານ ອະຊິຕະ ເກສະກຳພົນ ປະກຸດທະ ກັດຈານະ ສັນໄຊ ເວລັດຖະບຸດ ນິຄົນ ນາຕະບຸດ ແລ້ວຖາມບັນຫາເຫຼົ່ານັ້ນ

ທ່ານເຫຼົ່ານັ້ນຖືກຖາມແລ້ວ ບໍ່ສາມາດຕອບໄດ້ ເມື່ອຕອບບໍ່ໄດ້ກໍສະແດງຄວາມຄຽດ ຄວາມຂັດເຄືອງ ແລະຄວາມບໍ່ພໍໃຈໃຫ້ຜາກົດອອກມາ ທັງຍັງກັບຍ້ອນຖາມສະພິຍະປະຣິພາຊົກ ເສຍອີກ

ຕໍ່ມາ ສະພິຍະປະຣິພາຊົກມີຄວາມຄິດດັ່ງນີ້ວ່າ ທ່ານສະມະນະພາມທັງຫຼາຍຜູ້ເປັນເຈົ້າໝູ່ ເຈົ້າຄະນະ ເປັນຄະນາຈານ ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິ ເປັນຜູ້ທີ່ຄົນສ່ວນຫຼາຍຍ້ອງຍໍ ວ່າດີເລີດ ຄື ທ່ານປູຣະນະ ກັດສະປະ ຯລຯ ທ່ານນິຄົນ ນາຕະບຸດ ຖືກເຮົາຖາມບັນຫາແລ້ວບໍ່ ສາມາດຕອບໄດ້ ເມື່ອຕອບບໍ່ໄດ້ກໍສະແດງຄວາມຄຽດ ຄວາມຂັດເຄືອງ ແລະຄວາມບໍ່ພໍໃຈໃຫ້ ຜາກົດອອກມາ ທັງຍັງກັບຍ້ອນຖາມເຮົາໃນຂໍ້ນັ້ນອີກຊ້ຳ ຖ້າເປັນແນວນີ້ແລ້ວກໍ ເຮົາປ່ຽນເພດ ເປັນຄະລຶຫັດໄປເສບກາມຍັງດີກວ່າ

ຕໍ່ມາ ສະພິຍະປະຣິພາຊົກກັບຄິດຂຶ້ນໄດ້ວ່າ ພຣະສະມະນະໂຄດົມນີ້ກໍເປັນເຈົ້າໝູ່ ເຈົ້າ ຄະນະ ເປັນຄະນາຈານ ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິ ເປັນຜູ້ທີ່ຄົນສ່ວນຫຼາຍຍ້ອງຍໍວ່າ ດີເລີດເຊັ່ນກັນ ເອົາເທີ້ນ ເຮົາຄວນເຂົ້າໄປຫາພຣະສະມະນະໂຄດົມແລ້ວຖາມບັນຫາເຫຼົ່ານີ້

ແຕ່ແລ້ວສະພິຍະປະຣິພາຊົກກັບຄິດແນວນີ້ວ່າ ທ່ານສະມະນະພາມທັງຫຼາຍລ້ວນເປັນຜູ້ ຈະເລີນທັງໄວຍະວຸດແລະລັກສະນະ ເປັນຜູ້ໃຫຍ່ ລ່ວງການຜ່ານໄວມາໂດຍລຳດັບ ເປັນພຣະ ເຖຣະເປັນຣັດຕັນຍູບຸກຄົນ ບວດມາດົນ ເປັນເຈົ້າໝູ່ ເຈົ້າຄະນະ ເປັນຄະນາຈານ ມີຊື່ສຽງ ມີ ກຽດຕິຍົດ ເປັນເຈົ້າລັດທິ ເປັນຜູ້ທີ່ຄົນສ່ວນຫຼາຍຍ້ອງຍໍວ່າດີເລີດ ຄື ທ່ານປູຣະນະ ກັດສະປະ ຯລຯ ທ່ານນິຄົນ ນາຕະບຸດ ທ່ານເຫຼົ່ານັ້ນຖືກເຮົາຖາມບັນຫາແລ້ວກໍຍັງບໍ່ສາມາດ ຕອບໄດ້ ເມື່ອບໍ່ສາມາດຕອບໄດ້ ກໍຍັງສະແດງຄວາມຄຽດ ຄວາມຂັດເຄືອງ ແລະຄວາມບໍ່ພໍໃຈໃຫ້ຜາກົດ ອອກມາ ທັງຍັງກັບຍ້ອນຖາມເຮົາໃນຂໍ້ນັ້ນອີກຊ້ຳ ພຣະສະມະນະໂຄດົມ ຖືກເຮົາຖາມບັນຫາເຫຼົ່າ ນີ້ແລ້ວ ຈັກພະຍາກອນຕອບໄດ້ແນວໃດ ຍ້ອນພຣະສະມະນະໂຄດົມ ຍັງໜຸ່ມຫຼາຍ ແລະອອກ ບວດກໍຍັງບໍ່ດົນ

ຫຼັງຈາກນັ້ນ ສະພິຍະປະຣິພາຊົກກັບຄິດຂຶ້ນໄດ້ວ່າ ເຮົາບໍ່ຄວນດູໝິ່ນ ບໍ່ຄວນດູແຄນ ພຣະສະມະນະໂຄດົມວ່າ ຍັງໜຸ່ມຫຼາຍ ຄວາມຈິງ ແມ່ນພຣະສະມະນະໂຄດົມຈະຍັງໜຸ່ມ ແຕ່ກໍ ເປັນຜູ້ມີລິດຫຼາຍ ມີອານຸພາບຫຼາຍ ດັ່ງນັ້ນແລ້ວ ເຮົາຄວນເຂົ້າໄປຫາພຣະສະມະນະໂຄດົມແລ້ວ ຖາມບັນຫາເຫຼົ່ານີ້ດີກວ່າ

ຕໍ່ຈາກນັ້ນ ສະພິຍະປະຣິພາຊົກໄດ້ອອກເດີນທາງມຸ້ງໜ້າ ໄປທາງນະຄອນຣາດຊະຄຶ ທ່ຽວຈາ ຣິກ ໄປໂດຍລຳດັບ ຈົນວ່າໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ທີ່ພຣະເວລຸວັນ ກະລັນທະກະນິວາປະສະຖານ ເຂດນະຄອນຣາດຊະຄຶ ໄດ້ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນດ້ວຍຄາຖາວ່າ

[໕໑໖] ຂ້າພຣະອົງມີຄວາມເຄືອບແຄງສົງໄສ
ມຸ້ງຫວັງຈະທູນຖາມບັນຫາ
ພຣະອົງໂຜດຕັດຕອບບັນຫາທີ່ຂ້າພຣະອົງທູນຖາມໃຫ້ສິ້ນສົງໄສ
ໂຜດພະຍາກອນບັນຫາທີ່ຖືກຕ້ອງເໝາະສົມໄປຕາມລຳດັບ
ແກ່ຂ້າພຣະອົງດ້ວຍເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)

[໕໑໗] ສະພິຍະ ທ່ານເດີນທາງມາໄກ ມຸ້ງຫວັງເພື່ອຈະຖາມບັນຫາ
ເຮົາຈະກ່າວສະເຫຼີຍບັນຫາທີ່ທ່ານຖາມໃຫ້ສິ້ນສົງໄສ
ເຮົາຈະພະຍາກອນບັນຫາທີ່ຖືກຕ້ອງເໝາະສົມໄປຕາມລຳດັບແກ່ທ່ານ

[໕໑໘] ສະພິຍະ ທ່ານປາຖະໜາຈະຖາມບັນຫາຂໍ້ໃດຂໍ້ໜຶ່ງຢູ່ໃນໃຈ
ກໍຈົ່ງຖາມມາເທີ້ນ
ເຮົາຈະຕອບບັນຫານັ້ນ ໆ ໃຫ້ໝົດແກ່ທ່ານ

ທັນໃດນັ້ນ ສະພິຍະປະຣິພາຊົກຄິດວ່າ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ເຮົາບໍ່ເຄີຍໄດ້ໂອກາດຈັກໜ້ອຍໃນສະມະນະພາມເຫຼົ່າອື່ນເລີຍ ແຕ່ພຣະສະມະນະໂຄດົມໄດ້ຊົງໃຫ້ໂອກາດນີ້ແກ່ເຮົາແລ້ວ ເຂົາຈຶ່ງດີໃຈ ເບີກບານ ແຊ່ມຊື່ນ ເກີດປີຕິໂສມະນັດ ໄດ້ທູນຖາມບັນຫາກັບພຣະຜູ້ມີພຣະພາກເຈົ້າວ່າ

[໕໑໙] ບຸກຄົນບັນລຸອັນໃດ ບັນດິດຈຶ່ງຮຽກວ່າ ພິກຂຸ
ບຸກຄົນປະຕິບັດແນວໃດບັນດິດຈຶ່ງຮຽກວ່າ ຜູ້ສະງົບສະງ່ຽມ
ບຸກຄົນປະຕິບັດແນວໃດ ບັນດິດຈຶ່ງຮຽກວ່າ ຜູ້ເຝິກຕົນແລ້ວ
ບຸກຄົນຮູ້ແນວໃດ ບັນດິດຈຶ່ງຮຽກວ່າ ພຸດທະ
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງທູນຖາມບັນຫາແລ້ວ
ຂໍພຣະອົງໂຜດຕັດພະຍາກອນບັນຫາທີ່ທູນຖາມດ້ວຍເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດພະຍາກອນດ້ວຍພຣະຄາຖາດັ່ງນີ້)

[໕໔໐] ສະພິຍະ ບຸກຄົນໃດຄວນແກ່ຄຳຊົມເຊີຍວ່າ
ເປັນຜູ້ເຖິງນິບພານດ້ວຍທາງທີ່ຕົນເຮັດແລ້ວ
ຂ້າມພົ້ນຄວາມສົງໄສໄດ້ແລ້ວ ລະຄວາມເສື່ອມແລະຄວາມຈະເລີນແລ້ວ
ຢູ່ຈົບພົມມະຈັນ ສິ້ນພົບໃໝ່ແລ້ວ
ບຸກຄົນນັ້ນ ບັນດິດຮຽກວ່າ ພິກຂຸ໑

[໕໔໑] ບຸກຄົນຜູ້ວາງເສີຍໃນອາລົມທັງປວງ ມີສະຕິ
ບໍ່ບຽດບຽນສັດໃດ ໆ ໃນໂລກທັງໝົດ
ເປັນຜູ້ຂ້າມໂອຄະໄດ້ ເປັນຜູ້ສະຫງົບ
ມີຈິດບໍ່ຂຸ່ນມົວ ບໍ່ມີກິເລດຟຸ້ງຊ່ານ
ບຸກຄົນນັ້ນ ບັນດິດຮຽກວ່າ ຜູ້ສະຫງົບສະງ່ຽມ

[໕໔໔] ບຸກຄົນໃດອົບຮົມອິນຊີທັງຫຼາຍໄດ້ແລ້ວໃນໂລກທັງປວງ
ທັງພາຍໃນແລະພາຍນອກ ຮູ້ແຈ້ງທັງໂລກນີ້ແລະໂລກໜ້າ
ລໍຖ້າຢູ່ແຕ່ເວລາທໍ່ນັ້ນ
ບຸກຄົນນັ້ນຜູ້ອົບຮົມຕົນແລ້ວແບບນີ້
ບັນດິດຮຽກວ່າ ຜູ້ເຝິກຕົນແລ້ວ໑

[໕໔໓] ບຸກຄົນຜູ້ພິຈາລະນາກິເລດເຄື່ອງກຳນົດຈິດທັງໝົດ
ຮູ້ແຈ້ງສັງສາຣະວັດທັງ ໔ ສ່ວນ ຄືຈຸຕິແລະອຸບັດ
ປາສະຈາກທຸລີ ບໍ່ມີກິເລດພອກພູນ
ເປັນຜູ້ມົດຈິດ ບັນລຸພາວະທີ່ສິ້ນສຸດການເກີດ
ບັນດິດຮຽກວ່າ ພຸດທະ

ລຳດັບນັ້ນ ສະພິຍະປະຣິພາຊົກຊື່ນຊົມ ຍິນດີພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ດີໃຈ ເບີກບານ ແຊ່ມຊື່ນ ເກີດປີຕິໂສມະນັດ ໄດ້ທູນຖາມບັນຫາກັບພຣະຜູ້ມີພຣະພາກເຈົ້າຕໍ່ໄປວ່າ

[໕໔໔] ບຸກຄົນບັນລຸອັນໃດ ບັນດິດຈຶ່ງຮຽກວ່າ ພາມ
ບຸກຄົນປະພຶດແນວໃດ ບັນດິດຈຶ່ງຮຽກວ່າ ສະມະນະ
ບຸກຄົນປະຕິບັດແນວໃດ ບັນດິດຈຶ່ງຮຽກວ່າ ຜູ້ລ້າງບາບໄດ້
ບຸກຄົນປະພຶດແນວໃດ ບັນດິດຈຶ່ງຮຽກວ່າ ນາຄະ໒

ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງທູນຖາມບັນຫາແລ້ວ
ຂໍພຣະອົງໂຜດຕັດພະຍາກອນບັນຫາທີ່ທູນຖາມດ້ວຍເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)

[໕໔໕] ສະພິຍະ ບຸກຄົນຜູ້ລອຍບາບທັງປວງໄດ້ແລ້ວ
ເປັນຜູ້ປາສະຈາກມົນທິນ ເປັນຜູ້ປະເສີດ
ມີຈິດຕັ້ງໝັ້ນດ້ວຍສະມາທິ ດຳລົງຕົນໝັ້ນຄົງ
ຂ້າມພົ້ນສັງສາຣະວັດ ເປັນຜູ້ບໍລິສຸດຄົບຖ້ວນ
ບໍ່ມີຕັນຫາແລະທິດຖິອາໄສ ເປັນຜູ້ໝັ້ນຄົງ
ບຸກຄົນນັ້ນບັນດິດຮຽກວ່າ ພາມ[໑]

[໕໔໖] ບຸກຄົນຜູ້ສະງົບ ລະບຸນແລະບາບໄດ້
ເປັນຜູ້ປາສະຈາກທຸລີ ຮູ້ໂລກນີ້ແລະໂລກໜ້າ
ລ່ວງພົ້ນຊາດແລະມໍລະນະໄດ້ແລ້ວ
ເປັນຜູ້ໝັ້ນຄົງ ດຳລົງຕົນຢູ່ເຊັ່ນນັ້ນ
ບັນດິດຮຽກວ່າ ສະມະນະ

[໕໔໗] ບຸກຄົນຜູ້ຊຳຣະລ້າງບາບໄດ້ທັງໝົດ
ທັງພາຍໃນແລະພາຍນອກ ໃນໂລກທັງປວງ[໒]
ບໍ່ກັບມາສູ່ກັບ ໃນເທວະດາແລະມະນຸດຜູ້ຍັງທ່ອງທ່ຽວຢູ່ໃນກັບ[໓]
ບັນດິດຮຽກຜູ້ນັ້ນວ່າ ຜູ້ລ້າງບາບໄດ້

[໕໔໘] ບຸກຄົນຜູ້ບໍ່ເຮັດບາບແມ່ນເລັກໜ້ອຍໃນໂລກ
ກຳຈັດສັງໂຍດແລະເຄື່ອງຜູກມັດໄດ້ທັງໝົດ
ບໍ່ຕິດຂ້ອງຢູ່ໃນກິເລດເຄື່ອງຂ້ອງທັງປວງ ເປັນຜູ້ລຸດພົ້ນ
ເປັນຜູ້ໝັ້ນຄົງ ຜູ້ດຳລົງຕົນຢູ່ເຊັ່ນນັ້ນ
ບັນດິດຮຽກວ່າ ນາຄະ

ລຳດັບນັ້ນ ສະພິຍະປະຣິພາຊົກ ຯລຯ ໄດ້ທູນຖາມບັນຫາກັບພຣະຜູ້ມີພຣະພາກເຈົ້າເປັນຂໍ້ ຕໍ່ໄປວ່າ

[໕໔໙] ພຣະພຸດທະເຈົ້າທັງຫຼາຍຕັດຮຽກບຸກຄົນຢ່າງໃດວ່າ ຜູ້ຊະນະເຂດ
ຕັດຮຽກບຸກຄົນວ່າ ຜູ້ສະຫຼາດ ດ້ວຍອາການແນວໃດ

ແນວໃດ ຈຶ່ງຕັດຮຽກວ່າ ບັນດິດ
ແລະແນວໃດ ຕັດຮຽກວ່າ ມຸນີ
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງທູນຖາມບັນຫາແລ້ວ
ຂໍພຣະອົງໂຜດຕັດພະຍາກອນບັນຫາທີ່ທູນຖາມດ້ວຍເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໕໓໐] ສະພິຍະ ບຸກຄົນພິຈາລະນາເຂດ[១]ທັງໝົດ
ຄື ເຂດເທວະດາ ເຂດມະນຸດ ແລະເຂດພົມແລ້ວ
ຜູ້ລຸດພົ້ນຈາກເຄື່ອງຜູກມັດທີ່ເປັນມູນເຫດແຫ່ງເຂດ[២]ທັງມວນ
ເປັນຜູ້ໝັ້ນຄົງ ດໍາລົງຕົນຢູ່ເຊັ່ນນັ້ນ
ພຣະພຸດທະເຈົ້າທັງຫຼາຍຕັດຮຽກວ່າ ຜູ້ຊະນະເຂດ

[໕໓໑] ບຸກຄົນພິຈາລະນາເປືອກຟອງ[៣]ທັງໝົດ
ຄື ເປືອກຟອງເທວະດາ ເປືອກຟອງມະນຸດ
ແລະເປືອກຟອງພົມແລ້ວ
ຜູ້ລຸດພົ້ນຈາກເຄື່ອງຜູກມັດທີ່ເປັນມູນເຫດແຫ່ງເປືອກຟອງທັງມວນ
ເປັນຜູ້ໝັ້ນຄົງ ດໍາລົງຕົນຢູ່ເຊັ່ນນັ້ນ
ພຣະພຸດທະເຈົ້າທັງຫຼາຍຕັດຮຽກວ່າ ຜູ້ສະຫຼາດ

[໕໓໔] ບຸກຄົນພິຈາລະນາອາຍະຕະນະທັງ ໔ ປະການ
ຄື ອາຍະຕະນະທັງພາຍໃນແລະພາຍນອກແລ້ວ
ມີປັນຍາບໍລິສຸດ ກ້າວພົ້ນທໍາດໍາແລະທໍາຂາວ[១]ໄດ້ແລ້ວ
ເປັນຜູ້ໝັ້ນຄົງ ຜູ້ດໍາລົງຕົນຢູ່ເຊັ່ນນັ້ນ
ພຣະພຸດທະເຈົ້າທັງຫຼາຍຕັດຮຽກວ່າ ບັນດິດ

[໕໓໓] ບຸກຄົນຮູ້ທໍາທັງຂອງອະສັດຕະບຸຣຸດ ແລະສັດຕະບຸຣຸດ
ທັງພາຍໃນແລະພາຍນອກໃນໂລກທັງປວງ
ລ່ວງພົ້ນກິເລດເຄື່ອງຂ້ອງແລະຕັນຫາຄືຕາໜ່າງໄດ້ແລ້ວ
ຄວນໄດ້ຮັບຄວາມເຄົາລົບບູຊາຈາກເທວະດາແລະມະນຸດ
ບຸກຄົນນັ້ນ ພຣະພຸດທະເຈົ້າທັງຫຼາຍຕັດຮຽກວ່າ ມຸນີ[២]

ລໍາດັບນັ້ນ ສະພິຍະປະຣິພາຊົກ ໗ລ໗ ໄດ້ທູນຖາມບັນຫາກັບພຣະຜູ້ມີພຣະພາກເຈົ້າ ເປັນຂໍ້ ຕໍ່ໄປວ່າ

[໕໓໔] ບຸກຄົນບັນລຸອັນໃດ ບັນດິດຈຶ່ງຮຽກວ່າ ຜູ້ຈົບເວດ
ບຸກຄົນປະຕິບັດແນວໃດ ບັນດິດຈຶ່ງຮຽກວ່າ ຜູ້ຮູ້ຕາມ
ບຸກຄົນປະພຶດຕົນແນວໃດ ບັນດິດຈຶ່ງຮຽກວ່າ ຜູ້ມີຄວາມພຽນ
ແລະບຸກຄົນຕັດອັນໃດໄດ້ ບັນດິດຈຶ່ງຮຽກວ່າ ບຸຣຸດອາຊາໄນ
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງທູນຖາມບັນຫາແລ້ວ
ຂໍພຣະອົງໂຜດຕັດພະຍາກອນບັນຫາທີ່ທູນຖາມດ້ວຍເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໕໓໕] ສະພິຍະ ບຸກຄົນຄັດເລືອກເວດ[๑]ທັງໝົດ
ຂອງສະມະນະພາມທັງຫຼາຍທີ່ມີຢູ່
ປາສະຈາກຣາຄະໃນເວທະນາທັງປວງ
ກ້າວລ່ວງເວດທັງປວງໄດ້ແລ້ວ
ບຸກຄົນນັ້ນ ບັນດິດຮຽກວ່າ ຜູ້ຈົບເວດ[๒]

[໕໓໖] ບຸກຄົນພິຈາລະນາຮູ້ເທົ່າທັນກິເລດເຄື່ອງລ້າຊ້າ
ແລະນາມຮູບພາຍໃນຕົນ
ແລະກິເລດອັນເປັນມູນເຫດແຫ່ງພະຍາດໃນພາຍນອກ
ເປັນຜູ້ລຸດພົ້ນຈາກເຄື່ອງຜູກມັດອັນເປັນມູນເຫດແຫ່ງພະຍາດທັງປວງ
ເປັນຜູ້ໝັ້ນຄົງ ດຳລົງຕົນຢູ່ເຊັ່ນນັ້ນ
ບັນດິດຮຽກວ່າ ຜູ້ຮູ້ຕາມ

[໕໓໗] ໃນໂລກນີ້ ບຸກຄົນຜູ້ງົດເວັ້ນບາບທັງໝົດ
ລ່ວງພົ້ນທຸກໃນນະຣົກ ມີຄວາມພຽນ
ເປັນຜູ້ໝັ້ນຄົງ ດຳລົງຕົນຢູ່ເຊັ່ນນັ້ນ
ບັນດິດຮຽກວ່າ ຜູ້ມີຄວາມພຽນ
ມີຄວາມມຸ້ງໝັ້ນ ເປັນນັກປາດ

[໕໓໘] ບຸກຄົນຕັດເຄື່ອງຜູກມັດ[๓]ອັນເປັນມູນເຫດແຫ່ງກິເລດເຄື່ອງຂ້ອງ
ທັງພາຍໃນແລະພາຍນອກໄດ້ແລ້ວ
ເປັນຜູ້ລຸດພົ້ນຈາກເຄື່ອງຜູກມັດ
ອັນເປັນມູນເຫດແຫ່ງກິເລດເຄື່ອງຂ້ອງທັງປວງ
ເປັນຜູ້ໝັ້ນຄົງ ດຳລົງຕົນຢູ່ເຊັ່ນນັ້ນ
ບັນດິດຮຽກວ່າ ບຸຣຸດອາຊາໄນ

ລຳດັບນັ້ນ ສະພິຍະປະຣິພາຊົກ ໆລໆ ໄດ້ທູນຖາມບັນຫາກັບພຣະຜູ້ມີພຣະພາກເຈົ້າ ເປັນຂໍ້ ຕໍ່ໄປວ່າ

[໕໓໙] ບຸກຄົນບັນລຸອັນໃດ ບັນດິດຈຶ່ງຮຽກວ່າ ຜູ້ມີສຸຕະ
ບັນດິດຮຽກບຸກຄົນວ່າ ອະຣິຍະ ດ້ວຍອາການແນວໃດ
ບຸກຄົນປະພຶດແນວໃດ ບັນດິດຈຶ່ງຮຽກວ່າ ຜູ້ມີຈະຣະນະ
ແລະບຸກຄົນປະຕິບັດແນວໃດ ບັນດິດຈຶ່ງຮຽກວ່າ ປະຣິພາຊົກ
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງທູນຖາມແລ້ວ
ຂໍພຣະອົງໂຜດຕັດພະຍາກອນບັນຫາທີ່ທູນຖາມດ້ວຍເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໕໔໐] ສະພິຍະ ບຸກຄົນຜູ້ສະດັບແລ້ວ ຮູ້ຍິ່ງທຳທັງປວງ
ຄອບງຳທຳທັງທີ່ມີໂທດແລະບໍ່ມີໂທດຕ່າງ ໆ ມີຢູ່ໃນໂລກໄດ້
ໝົດຄວາມສົງໄສ ມີຈິດລຸດພົ້ນ
ບໍ່ມີຄວາມທຸກໃນທຳທັງປວງ[១]
ບັນດິດຮຽກວ່າ ຜູ້ມີສຸຕະ

[໕໔໑] ບຸກຄົນຜູ້ມີປັນຍາ ຕັດອາໄລແລະອາສະວະໄດ້ແລ້ວ
ບໍ່ຖືກຳເນີດເກີດໃນທ້ອງອີກ
ລະສັນຍາ ໓ ຢ່າງ ແລະລະເປືອກຕົມຄືກາມໄດ້
ບໍ່ກັບມາສູ່ກັບ[២]ອີກ
ບັນດິດຮຽກວ່າ ອະຣິຍະ

[໕໔໒] ໃນສາດສະໜານີ້ ບຸກຄົນຜູ້ບັນລຸທຳທີ່ຄວນບັນລຸຍ້ອນຈະຣະນະ[໓]
ເປັນຜູ້ສະຫຼາດ ຮູ້ທຳໄດ້ໃນການທຸກເມື່ອ
ບໍ່ຂ້ອງຢູ່ໃນທຳທັງປວງ
ມີຈິດລຸດພົ້ນແລ້ວ ບໍ່ມີປະຕິຄະ
ບັນດິດຮຽກວ່າ ຜູ້ມີຈະຣະນະ

[໕໔໓] ບຸກຄົນຜູ້ກຳຈັດທຳທີ່ມີທຸກເປັນວິບາກເຊິ່ງມີຢູ່
ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນໄດ້ແລ້ວ
ປະພຶດຕົນຢູ່ດ້ວຍປັນຍາພິຈາລະນາ
ແລະລະມາຍາ ມານະ ໂລພະ ແລະໂກທະໄດ້ໝົດສິ້ນ

ເຮັດນາມຮູບໃຫ້ສິ້ນສຸດລົງໄດ້
ບັນດິດຮຽກວ່າ ປະຣິພາຊົກ
ຜູ້ບັນລຸທຳທີ່ຄວນບັນລຸ

ລຳດັບນັ້ນ ສະພິຍະປະຣິພາຊົກຊື່ນຊົມຍິນດີພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ດີໃຈ ເບີກບານ ແຊ່ມຊື່ນ ເກີດປີຕິໂສມະນັດ ລຸກຈາກບ່ອນນັ່ງ ເຮັດຜ້າບ່ຽງບ່າຂ້າງໜຶ່ງ ປະຄອງ ອັນຊະລີໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບ ແລ້ວໄດ້ສະດຸດີພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາທີ່ເໝາະສົມ ສະເພາະພຣະພັກວ່າ

[໕໔໔] ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຜູ້ມີປັນຍາຄືແຜ່ນດິນ
ພຣະອົງຊົງກຳຈັດມິດສາທິດຖິ ໑ ແລະມິດສາທິດຖິ ໖໐
ທີ່ອາໄສຄຳພີເປັນຫຼັກການຂອງພວກສະມະນະລັດທິອື່ນ
ເຊິ່ງອາໄສອັກສອນສື່ຄວາມໝາຍ ແລະສັນຍາທີ່ວິປະຣິດ
ຊົງກ້າວພົ້ນຄວາມມືດຄືໂອຄະໄດ້ແລ້ວ

[໕໔໕] ພຣະອົງຊົງເປັນຜູ້ເຖິງບ່ອນສຸດແຫ່ງທຸກ ເປັນຜູ້ເຖິງຝັ່ງ
ຊົງເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ
ຂ້າພຣະອົງເຂົ້າໃຈໃນພຣະອົງວ່າ ມີອາສະວະໝົດແລ້ວ
ພຣະອົງຊົງມີຄວາມຮຸ່ງເຮືອງ ມີຄວາມຮູ້ ມີປັນຍາຫຼາຍ
ໄດ້ຊົງແນະນຳຂ້າພຣະອົງຜູ້ເຮັດບ່ອນສຸດທຸກໃຫ້ຂ້າມໄດ້ແລ້ວ

[໕໔໖] ຍ້ອນພຣະອົງໄດ້ຊົງຮູ້ບັນຫາທີ່ຂ້າພຣະອົງສົງໄສ
ຊົງຊ່ອຍໃຫ້ຂ້າພຣະອົງຂ້າມພົ້ນຄວາມລັງເລໃຈ
ຂ້າແດ່ພຣະອົງຜູ້ເປັນພຣະມຸນີ
ຜູ້ຊົງບັນລຸທຳທີ່ຄວນບັນລຸໃນແນວທາງຂອງມຸນີ
ບໍ່ມີກິເລດຝັງແໜ້ນພຣະຫະໄທ
ຊົງເປັນເຜົ່າພັນແຫ່ງພຣະອາທິດ
ຂ້າພຣະອົງຂໍນອບນ້ອມແດ່ພຣະອົງຜູ້ຊົງສະຫງົບສະງ່ຽມຢ່າງຍິ່ງ

[໕໔໗] ພຣະອົງຜູ້ມີພຣະຈັກຂຸ ໄດ້ຊົງພະຍາກອນບັນຫາຂໍ້ສົງໄສ
ທີ່ເຄີຍມີມາກ່ອນຂອງຂ້າພຣະອົງຈົນໝົດສິ້ນແລ້ວ
ພຣະອົງບໍ່ມີນິວອນ ຈຶ່ງນັບວ່າເປັນພຣະມຸນີ
ຜູ້ຕັດສະຣູ້ຖືກດ້ວຍພຣະອົງເອງແນ່ແທ້

[໕໔໗] ອັນໜຶ່ງ ຄວາມຄັບແຄ້ນໃຈທັງໝົດ
ພຣະອົງຊົງກຳຈັດຕັດຖອນໄດ້ແລ້ວ
ພຣະອົງຈຶ່ງມີພຣະຫະໄທເຢືອກເຢັນ
ມີການອົບຮົມຕົນເຖິງບ່ອນສຸດແລ້ວ ມີພຣະປັນຍາຊົງຈຳໝັ້ນຄົງ
ມີຄວາມບາກບັ່ນໃນສັດຈະຢູ່ປະຈຳ

[໕໔໙] ເທວະດາທັງ ໔ ພວກທີ່ອາໄສຢູ່ ນາຣະທະບັນພົດທັງໝົດ
ພາກັນຊື່ນຊົມອະນຸໂມທະນາພຣະອົງຜູ້ປະເສີດ
ຍິ່ງໃຫຍ່ໃນໝູ່ຄົນຜູ້ປະເສີດ ຜູ້ຊົງມີຄວາມພຽນຍິ່ງໃຫຍ່
ຊົງສະແດງພຣະທຳມະເທດສະໜາຢູ່

[໕໕໐] ຂ້າແດ່ພຣະອົງຜູ້ເປັນບຸຣຸດອາຊາໄນ
ຂ້າພຣະອົງຂໍນອບນ້ອມແດ່ພຣະອົງ
ຂ້າແດ່ພຣະອົງຜູ້ເປັນບຸຣຸດສູງສຸດ
ຂ້າພຣະອົງຂໍນອບນ້ອມແດ່ພຣະອົງ
ບໍ່ມີຜູ້ໃດເລີຍທີ່ຈະຊົງຄຸນສະເໝີດ້ວຍພຣະອົງ
ໃນໂລກນີ້ພ້ອມທັງເທວະໂລກ

[໕໕໑] ພຣະອົງຊົງເປັນສັບພັນຍູພຸດທະເຈົ້າ
ເປັນພຣະສາດສະດາ ເປັນພຣະມຸນີຄອບງຳມານໄດ້
ຊົງຕັດອະນຸໄສກິເລດໄດ້ ຊົງຂ້າມແມ່ນ້ຳໃຫຍ່ຄືສົງສານໄດ້ແລ້ວ
ຍັງຊົງຊ່ອຍໝູ່ສັດນີ້ໃຫ້ຂ້າມໄປນຳໄດ້ດ້ວຍ

[໕໕໒] ພຣະອົງຊົງລ່ວງພົ້ນອຸປະທິກິເລດໄດ້
ທຳລາຍອາສະວະໄດ້ແລ້ວ ບໍ່ມີອຸປາທານ (ຄວາມຖືໝັ້ນ)
ລະຄວາມຢ້ານກົວໄພໄດ້ ຄືພະຍາຣາດຊະສີບໍ່ຢ້ານຕໍ່ໝູ່ເນື້ອ[๑]

[໕໕໓] ພຣະອົງບໍ່ຊົງຕິດຢູ່ໃນບຸນແລະບາບທັງສອງ
ຄືດອກບົວຂາວທີ່ສວຍງາມບໍ່ຕິດຢູ່ໃນນ້ຳ
ຂ້າແດ່ພຣະອົງຜູ້ມີຄວາມພຽນ
ຂໍພຣະອົງໂຜດຢຽດພຣະບາດອອກມາເທີ້ນ
ສະພິຍະຈະຂໍຖວາຍອະພິວາດພຣະບາດທັງສອງຂອງພຣະສາດສະດາ

ລຳດັບນັ້ນ ສະພິຍະປະຣິພາຊົກໝອບລົງແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍ ຂະໜ່ອມແລ້ວ ໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງ ຊັດເຈນມ່ວນຫຼາຍ ຂ້າແດ່ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະຜູ້ ມີພຣະພາກເຈົ້າຊົງປະກາດທຳຢ່າງແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟ ໃນບ່ອນມືດ ໂດຍຕັ້ງໃຈວ່າ ຄົນມີຕາ ດີຈັກເຫັນຮູບໄດ້ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳແລະພິກຂຸສົງເປັນ ສະຣະນະ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງເພິ່ງໄດ້ບັນພະຊາອຸປະສົມບົດໃນສຳນັກຂອງ ພຣະຜູ້ມີພຣະພາກເຈົ້າເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ສະພິຍະ ຜູ້ເຄີຍເປັນອັນຍະເດຍຣະຖີມາກ່ອນ ຫວັງຈະ ບັນພະຊາ ອຸປະສົມບົດໃນທຳວິໄນນີ້ ຈະຕ້ອງຢູ່ປະຣິວາດເປັນເວລາ ໔ ເດືອນ ເມື່ອຄົບ ໔ ເດືອນແລ້ວ ພິກຂຸທັງຫຼາຍພໍໃຈຈຶ່ງຈະບັນພະຊາອຸປະສົມບົດໃຫ້ເປັນພິກຂຸ ແຕ່ໃນເລື້ອງການຢູ່ ປະຣິວາດນີ້ ເຮົາກໍຮູ້ຄວາມແຕກຕ່າງຂອງແຕ່ລະບຸກຄົນ

ສະພິຍະປະຣິພາຊົກຂາບທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຖ້າຜູ້ເຄີຍເປັນອັນຍະເດຍຣະ ຖີມາກ່ອນ ຫວັງຈະບັນພະຊາອຸປະສົມບົດໃນທຳວິໄນນີ້ ຈະຕ້ອງຢູ່ປະຣິວາດເປັນເວລາ ໔ ເດືອນ ເມື່ອຄົບ ໔ ເດືອນແລ້ວ ພິກຂຸທັງຫຼາຍພໍໃຈຈຶ່ງຈະບັນພະຊາອຸປະສົມບົດໃຫ້ເປັນພິກຂຸ ຂ້າພຣະ ອົງກໍຈະຂໍຢູ່ປະຣິວາດເປັນເວລາ ໔ ປີ ເມື່ອຄົບ ໔ ປີ ຫາກພິກຂຸທັງຫຼາຍພໍໃຈກໍຂໍໂຜດບັນພະຊາ ອຸປະສົມບົດໃຫ້ຂ້າພຣະອົງເປັນພິກຂຸດ້ວຍເທີ້ນ

ລຳດັບນັ້ນ ສະພິຍະປະຣິພາຊົກກໍໄດ້ຮັບການບັນພະຊາອຸປະສົມບົດໃນສຳນັກພຣະຜູ້ ມີພຣະພາກເຈົ້າ ເມື່ອທ່ານພຣະສະພິຍະອຸປະສົມບົດໄດ້ບໍ່ດົນ ກໍຈາກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີ ຄວາມພຽນ ອຸທິດກາຍແລະໃຈ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນບ່ອນ ສຸດແຫ່ງ ພົມມະຈັນທີ່ກຸນລະບຸດທັງຫຼາຍຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ປາຖະໜາດ້ວຍປັນຍາ ອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າຊາດໝົດແລ້ວ ຢູ່ຈົບພົມມະ ຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ຈຶ່ງເປັນອັນວ່າ ທ່ານພຣະສະພິຍະໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນບັນດາພຣະອະຣະ ຫັນ ທັງຫຼາຍ

**ສະພິຍະສູດທີ ໖ ຈົບ**

# ໆ. ເສລະສູດ[1]

## ວ່າດ້ວຍເສລະພາມ

ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໝູ່ໃຫຍ່ຈຳນວນ ໑,໒໕໐ ອົງ ສະເດັດທ່ຽວຈາຣິກໄປໃນອັງຄຸດຕະຣາປະຊົນນະບົດ ສະເດັດເຖິງອາປະນະນິຄົມຂອງຊາວອັງຄຸດຕະຣາປະຊົນນະບົດ

ເກນິຍະຊະດິນໄດ້ສະດັບຂ່າວວ່າ ໄດ້ຂ່າວວ່າ ພຣະສະມະນະໂຄດົມສາກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນກຳລັງສະເດັດຈາຣິກຢູ່ໃນອັງຄຸດຕະຣາປະຊົນນະບົດ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ຈຳນວນ ໑,໒໕໐ ອົງ ສະເດັດໄປຕາມລຳດັບຈົນເຖິງອາປະນະນິຄົມແລ້ວ ທ່ານພຣະ- ໂຄດົມນັ້ນມີກິດຕິສັບອັນງາມຂ່າລືໄປແລ້ວແນວນີ້ວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາ ແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາ ຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຊົງຮູ້ແຈ້ງໂລກນີ້ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍພຣະອົງເອງແລ້ວ ຊົງປະກາດໃຫ້ຜູ້ອື່ນ ຮູ້ນຳ ພຣະອົງຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ຊົງປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະບໍລິສຸດ ບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍແນວນີ້ ເປັນຄວາມດີຢ່າງແທ້ຈິງ

## ເກນິຍະຊະດິນນິມົນສະເຫວີຍພັດຕາຫານ

ຫຼັງຈາກນັ້ນ ເກນິຍະຊະດິນໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເກນິຍະຊະດິນເຫັນແຈ້ງ ນ້ອມໃຈໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ຄັ້ງນັ້ນເກນິຍະຊະດິນຜູ້ອັນພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຢາກຮັບເອົາໄປປະຕິບັດປຸກໃຈ ໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ໄດ້

ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂໍທ່ານພຣະໂຄດົມພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງຂ້າພຣະອົງໃນມື້ອື່ນນີ້ເທີ້ນ ຂ້ານ້ອຍ

ເມື່ອເກນິຍະຊະດິນຂາບທູນແນວນີ້ແລ້ວພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບເຂົາດັ່ງນີ້ວ່າເກນິຍະ ພິກຂຸສົງມີຫຼາຍເຖິງ ໑,໘໕໐ ອົງ ແມ່ນທ່ານກໍຍັງເຫຼື້ອມໃສໃນພວກພາມຍິ່ງ

ແມ່ນເທື່ອທີ ໔ ເກນິຍະຊະດິນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະໂຄດົມ ຜູ້ຈະເລີນ ພິກຂຸສົງມີຫຼາຍເຖິງ ໑,໘໕໐ ອົງ ທັງຂ້າພຣະອົງເປັນຜູ້ເຫຼື້ອມໃສໃນພວກພາມກໍຈິງ ເຖິງແນວນັ້ນ ຂໍທ່ານພຣະໂຄດົມພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງຂ້າພຣະອົງໃນມື້ອື່ນນີ້ເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບເຂົາວ່າ ເກນິຍະ ພິກຂຸສົງມີຫຼາຍເຖິງ ໑,໘໕໐ ອົງ ແມ່ນທ່ານກໍຍັງເຫຼື້ອມໃສໃນພວກພາມຍິ່ງ

ແມ່ນເທື່ອທີ ໕ ເກນິຍະຊະດິນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະໂຄດົມ ຜູ້ຈະເລີນ ພິກຂຸສົງມີຫຼາຍເຖິງ ໑,໘໕໐ ອົງ ທັງຂ້າພຣະອົງເປັນຜູ້ເຫຼື້ອມໃສໃນພວກພາມກໍຈິງ ເຖິງແນວນັ້ນ ຂໍທ່ານພຣະໂຄດົມພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງຂ້າພຣະອົງໃນມື້ອື່ນນີ້ເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນດ້ວຍພຣະອາການດຸດສະນີ ເມື່ອເກນິຍະຊະດິນຮູ້ອາການ ທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກບ່ອນນັ່ງເຂົ້າໄປສູ່ອາສົມຂອງຕົນແລ້ວຮຽກພວກມິດ ຄົນສະນິດ ແລະຍາດສາໂລຫິດມາບອກວ່າ ທ່ານທັງຫຼາຍ ຂ້າພະເຈົ້າຂໍແຈ້ງໃຫ້ຮູ້ວ່າ ຂ້າພະເຈົ້າໄດ້ນິມົນພຣະສະມະນະໂຄດົມພ້ອມດ້ວຍພິກຂຸສົງມາສັນພັດຕາຫານເຊົ້າມື້ອື່ນນີ້ ຈຶ່ງຂໍໃຫ້ທ່ານທັງຫຼາຍສະລະແຮງກາຍຊ່ວຍເຫຼືອຂ້າພະເຈົ້າດ້ວຍເທີ້ນ ຊົນເຫຼົ່ານັ້ນຮັບຄໍາແລ້ວ ລາງພວກຂຸດບ່ອນເຮັດເຕົາ ລາງພວກຜ່າຟືນ ລາງພວກລ້າງຖ້ວຍໂຖໂອຊາມ ລາງພວກຈັດຫານໍ້າໃຊ້ນໍ້າສັນ ລາງພວກປູອາສະນະ ສ່ວນເກນິຍະຊະດິນລົງມືຕົບແຕ່ງຜາມພິທີດ້ວຍຕົນເອງ

## ເສລະພາມໄດ້ຟັງຄໍາວ່າພຸດທະ

ສະໄໝນັ້ນ ເສລະພາມອາໄສຢູ່ທີ່ປ່າອາປະນະນິຄົມ ເປັນຜູ້ມີຄວາມຮູ້ຈົບໄຕຣເພດ ພ້ອມທັງນິກຄັນທຸສາດ ເກຕຸພະສາດ ອັກສອນສາດ ແລະປະຫວັດສາດ ຮູ້ໂຕບົດ ແລະໄວຍາກອນຊ່ຽວຊານໂລກາຍະຕະສາດ ແລະການທໍານາຍລັກສະນະມະຫາບຸຣຸດ ທັງຍັງເປັນອາຈານສອນມົນແກ່ມານົບຈໍານວນ ໕໐໐ ຄົນອີກດ້ວຍ

ສະໄໝນັ້ນ ເກນີຍະຊະດິນກໍເປັນຜູ້ໜຶ່ງທີ່ມີຄວາມເຫຼື້ອມໃສໃນເສລະພາມຫຼາຍ ຂະນະນັ້ນ ເສລະພາມກຳລັງຍ່າງພັກຜ່ອນພ້ອມກັບມານົບ ໓໐໐ ຄົນຕິດຕາມໄປທ່າງ ໆ ຜ່ານໄປທາງອາສົມຂອງເກນີຍະຊະດິນ ໄດ້ເຫັນຄົນລາງພວກກຳລັງຊຸດບ່ອນເຮັດເຕົາ ໗ລ໗ ລາງພວກປູອາສະນະ ສ່ວນເກນີຍະຊະດິນກຳລັງລົງມືຕົບແຕ່ງຜາມພິທີດ້ວຍຕົນເອງ ເມື່ອເຫັນດັ່ງນັ້ນຈຶ່ງກ່າວກັບເກນີຍະຊະດິນດັ່ງນີ້ວ່າ ທ່ານເກນີຍະ ຈະມີພິທີອາວາຫະມຸງຄຸນ ວິວາຫະມຸງຄຸນບໍ ພິທີບູຊາມະຫາຍັນຈະຜາກົດແກ່ທ່ານ ຫຼືທ່ານໄດ້ທູນເຊີນພຣະເຈົ້າພິມພິສານຈອມທັບມະຄົດຣັດ ໃຫ້ສະເດັດມາສະເຫວີຍພຣະກະຍາຫານພ້ອມກັບຂ້າຣາດຊະບໍຣິພານໃນເຊົ້າມືອື່ນນີ້ບໍ

ເກນີຍະຊະດິນບອກວ່າ ຂ້າແດ່ທ່ານເສລະ ອາວາຫະມຸງຄຸນ ວິວາຫະມຸງຄຸນ ບໍ່ມີແກ່ຂ້າພະເຈົ້າ ທັງພຣະເຈົ້າພິມພິສານຈອມທັບມະຄົດຣັດ ຂ້າພະເຈົ້າກໍບໍ່ໄດ້ທູນເຊີນສະເດັດມາສະເຫວີຍພຣະກະຍາຫານພ້ອມທັງຂ້າຣາດຊະບໍຣິພານໃນເຊົ້າມືອື່ນນີ້ເລີຍ ແຕ່ພິທີມະຫາຍັນໄດ້ຜາກົດແກ່ຂ້າພະເຈົ້າ ເນື່ອງຈາກພຣະສະມະນະໂຄດົມສາກະຍະບຸດ ຜູ້ສະເດັດອອກບວດຈາກສາກະຍະຕະກູນ ກຳລັງສະເດັດຈາ ຣິກໄປໃນອັງຄຸດຕະຣາປະຊົນນະບົດພ້ອມດ້ວຍພິກຂຸສົງໝູ່ໃຫຍ່ຈຳນວນ ໑,໔໕໐ ອົງ ສະເດັດມາ ຕາມລຳດັບຈົນເຖິງອາປະນະນິຄົມແລ້ວ ທ່ານພຣະໂຄດົມພຣະອົງນັ້ນມີພຣະກິດຕິສັບອັນງາມ ຊ່າລືໄປແນວນີ້ວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ໗ລ໗ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າຂ້າພະເຈົ້າໄດ້ນິມົນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ພ້ອມດ້ວຍພິກຂຸສົງມາສັນພັດຕາຫານໃນເຊົ້າມືອື່ນນີ້

ເສລະພາມຖາມວ່າ ທ່ານເກນີຍະ ທ່ານກ່າວຄຳວ່າ ພຸດທະ ບໍ?

ເກນີຍະຊະດິນຕອບວ່າ ທ່ານເສລະ ແມ່ນ ຂ້າພະເຈົ້າກ່າວຄຳວ່າ ພຸດທະ

ເສລະພາມຖາມຢ້ຳອີກວ່າ ທ່ານເກນີຍະ ທ່ານກ່າວຄຳວ່າ ພຸດທະ ບໍ?

ເກນີຍະຊະດິນກໍຕອບຢ້ຳວ່າ ທ່ານເສລະ ແມ່ນ ຂ້າພະເຈົ້າກ່າວຄຳວ່າ ພຸດທະ

ລຳດັບນັ້ນ ເສລະພາມໄດ້ຄິດວ່າ ວ່າຕາມລັກສະນະມະຫາບຸຣຸດ ໓໒ ປະການ ໃນຄຳພີມົນຂອງພວກເຮົາຣະບຸວ່າ ແມ່ນແຕ່ສຽງປະກາດ ຄືຄຳວ່າ ພຸດທະ ນີ້ກໍຫາ ໄດ້ຍາກໃນໂລກເຊິ່ງມະຫາບຸຣຸດຜູ້ປະກອບດ້ວຍລັກສະນະມະຫາບຸຣຸດ ໓໒ ປະການ ຍ່ອມມີຄະຕິ ໒ ປະການທີ່ນັ້ນ ບໍ່ເປັນແນວອື່ນ ຄື

ຖ້າຢູ່ຄອງເຮືອນກໍຈະເປັນພຣະເຈົ້າຈັກກະພັດຜູ້ຊົງທຳ ປົກຄອງແຜ່ນດິນໂດຍທຳ ພຣະຣາດຊະອຳນາດແຜ່ໄປທົ່ວປະຖະພີມີມະຫາສະມຸດທັງ ໔ ເປັນຂອບເຂດ ຊົງຊະນະຂ້າເສິກທັງພາຍໃນແລະພາຍນອກ ມີພຣະຣາດຊະອານາຈັກໝັ້ນຄົງ ຊົງສົມບູນດ້ວຍຣັດຕະນະ ໗ ປະການຄື ຈັກແກ້ວ ຊ້າງແກ້ວ ມ້າແກ້ວ ມະນີແກ້ວ ນາຣີແກ້ວ ຄະຫະບໍດີແກ້ວ ປະຣິນາຍົກແກ້ວພຣະອົງມີພຣະຣາດຊະໂອຣົດຫຼາຍກວ່າ ໑,໐໐໐ ພຣະອົງ ເຊິ່ງລ້ວນແຕ່ກ້າຫານ ມີພຣະຮູບສະງ່າ

ງາມສົມເປັນວິຣະກະສັດ ສາມາດຈະທຳລາຍກອງທັບຂ້າເສິກ ພຣະອົງຊົງພິຊິດໄຊໂດຍຄຸນນະທຳ ບໍ່ຕ້ອງໃຊ້ອາດຍາ ບໍ່ຕ້ອງໃຊ້ອາວຸດ ຊົງຄອບຄອງແຜ່ນດິນນີ້ ເຊິ່ງມີສະມຸດສາຄອນເປັນຂອບເຂດ

ຖ້າສະເດັດອອກຈາກເຮືອນບວດເປັນບັນພະຊິດ ຈະສຳເລັດເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ມີຫຼັງຄາຄືກິເລດອັນເປີດແລ້ວໃນໂລກ

ເສລະພາມຖາມວ່າ ທ່ານເກນິຍະ ຂະນະນີ້ທ່ານພຣະໂຄດົມຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນປະທັບຢູ່ບ່ອນໃດ

## ເສລະພາມເຂົ້າເຝົ້າພຣະພຸດທະເຈົ້າ

ເມື່ອເສລະພາມຖາມແບບນີ້ແລ້ວ ເກນິຍະຊະດິນໄດ້ຍົກແຂນຂວາຂຶ້ນໄດ້ກ່າວກັບເສລະພາມດັ່ງນີ້ວ່າ ທ່ານເສລະ ທ່ານຈົ່ງຍ່າງໄປທາງບໍລິເວນທິວໄມ້ສີຂຽວນັ້ນເທີ້ນ ເມື່ອໄດ້ຟັງດັ່ງນັ້ນເສລະພາມພ້ອມທັງມານົບ ໓໐໐ ຄົນ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກຮອດບ່ອນຢູ່ ພ້ອມຮຽກມານົບເຫຼົ່ານັ້ນມາເຕືອນວ່າ ທ່ານທັງຫຼາຍ ຈົ່ງຢ່າສົ່ງສຽງດັງ ຄ່ອຍ ໆ ຍ່າງນຳກັນໄປໃຫ້ເປັນລະບຽບ ຍ້ອນທ່ານຜູ້ຈະເລີນເຫຼົ່ານັ້ນມັກຢູ່ຕາມລຳພັງຄືພະຍາຣາດຊະສີໃຫ້ຍິນດີໄດ້ຍາກ ອັນໜຶ່ງ ຂະນະທີ່ເຮົາກຳລັງສົນທະນາກັບພຣະສະມະນະໂຄດົມ ຂໍພວກທ່ານຢ່າເວົ້າສອດແຊກຂຶ້ນ ຖ້າໃຫ້ເຮົາສົນທະນາຈົບສາກ່ອນ

ເມື່ອຕັກເຕືອນສິດແບບນີ້ແລ້ວເສລະພາມພາສິດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ພ້ອມກວດເບິ່ງລັກສະນະມະຫາບຸຣຸດ ໓໒ ປະການ ໃນພຣະວໍຣະກາຍພຣະຜູ້ມີພຣະພາກເຈົ້າ ກໍໄດ້ເຫັນລັກສະນະມະຫາບຸຣຸດ ໓໒ ປະການໃນພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າເປັນສ່ວນຫຼາຍ ເວັ້ນຢູ່ພຽງ ໒ ປະການ ຈຶ່ງຍັງເຄືອບແຄງສົງໄສ ບໍ່ໝັ້ນໃຈ ບໍ່ຍອມຮັບ ໃນລັກສະນະມະຫາບຸຣຸດອີກ ໒ ປະການ ຄື (໑) ພຣະຄຸຍຫະຖານທີ່ເຊື່ອງຢູ່ໃນຝັກ (໒) ພຣະຊິວຫາທີ່ຍາວຍິ່ງ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງດຳຣິວ່າ ເສລະພາມນີ້ເຫັນລັກສະນະມະຫາບຸຣຸດ ໓໒ ປະການຂອງເຮົາເປັນສ່ວນຫຼາຍ ເວັ້ນຢູ່ ໒ ປະການ ຈຶ່ງຍັງເຄືອບແຄງ ສົງໄສ ບໍ່ໝັ້ນໃຈ ບໍ່ຍອມຮັບໃນລັກສະນະມະຫາບຸຣຸດອີກ ໒ ປະການ ຄື (໑) ພຣະຄຸຍຫະຖານທີ່ເຊື່ອງຢູ່ ໃນຝັກ (໒) ພຣະຊິວຫາທີ່ຍາວຍິ່ງ

ທັນໃດນັ້ນ ພຣະຜູ້ມີພຣະພາກເຈົ້າຊົງບັນດານອິດທາພິສັງຂານໃຫ້ເສລະພາມໄດ້ເຫັນພຣະຄຸຍຫະຖານທີ່ເຊື່ອງຢູ່ໃນຝັກ ແລະຊົງແລບພຣະຊິວຫາສອດເຂົ້າປ່ອງພຣະກັນທັງ ໔ ສັບກັນໄປມາ ແລ້ວຊົງຍ້າຍກັບມາສອດເຂົ້າປ່ອງພຣະນາສິກທັງສອງສັບກັນ ແລ້ວຈຶ່ງ ຊົງແຜ່ພຣະຊິວຫາອັດບໍລິເວນພຣະນະລາດທັງໝົດ

## ເສລະພາມກັບສິດຂາບທູນຂໍບັນພະຊາອຸປະສົມບົດ

ເສລະພາມຄິດວ່າ ພຣະສະມະນະໂຄດົມຊົງປະກອບດ້ວຍລັກສະນະມະຫາບຸຣຸດ ໓໒ ປະການບໍລິບູນ ບໍ່ບົກຜ່ອງ ແຕ່ເຮົາຍັງບໍ່ຮູ້ວ່າພຣະອົງເປັນພຣະພຸດທະເຈົ້າຈິງຫຼືບໍ່ ເຮົາເຄີຍຟັງຄຳຂອງພາມທັງຫຼາຍຜູ້ສູງໄວ ເປັນຜູ້ໃຫຍ່ ເປັນອາຈານຕໍ່ ໆ ກັນມາ ກ່າວສອນໄວ້ວ່າ ພຣະຜູ້ມີພຣະພາກເຈົ້າອະຣະຫັນຕະສຳມາສຳພຸດທະເຈົ້າທັງຫຼາຍ ຍ່ອມສະແດງ ພຣະອົງໃຫ້ຜາກົດໃນເມື່ອບຸກຄົນກ່າວເຖິງຄຸນຂອງພຣະອົງ ເອົາເທີ້ນ ເຮົາຄວນຊົມເຊີຍພຣະສະມະນະໂຄດົມສະເພາະພຣະພັກເປັນຄາຖາທີ່ ເໝາະສົມເມື່ອຄິດໄດ້ດັ່ງນັ້ນເສລະພາມຈຶ່ງສະດຸດີພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາທີ່ເໝາະສົມສະເພາະພຣະພັກ ວ່າ

[໕໕໔] ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ພຣະອົງສະເດັດອຸບັດມາດີແລ້ວ
ມີພຣະວິຣິຍະພາບ ມີພຣະວໍຣະກາຍສົມບູນ
ມີພຣະຣັດສະໝີເຮືອງງາມ ເປັນຜູ້ໜ້າທັດສະນາຍິ່ງ
ມີພຣະສະຫວີວັນຜຸດຜ່ອງດັ່ງຄຳ
ມີພຣະແຂ້ວແກ້ວຂາວສະອາດ

[໕໕໕] ຍ້ອນພຣະລັກສະນະມະຫາບຸຣຸດ
ທີ່ມີຜາກົດແກ່ມະຫາບຸຣຸດນັ້ນ
ຍ່ອມມີຜາກົດໃນພຣະວໍຣະກາຍຂອງພຣະອົງຢ່າງຄົບຖ້ວນ

[໕໕໖] ພຣະອົງມີພຣະເນດແຈ່ມໃສ ມີພຣະພັກຜຸດຜ່ອງ
ມີພຣະວໍຣະກາຍສູງໃຫຍ່ຊື່
ມີພຣະອຳນາດ ຊົງຮຸ່ງເຮືອງຢູ່ໃນທ່າມກາງໝູ່ສະມະນະ
ຄືດວງອາທິດຮຸ່ງເຮືອງຢູ່ ສັນນັ້ນ

[໕໕໗] ພຣະອົງເປັນພິກຂຸ ມີຄຸນສົມບັດງົດງາມໜ້າຊົມ
ມີພຣະສະຫວີວັນຜຸດຜ່ອງດັ່ງຄຳ
ພຣະອົງມີພຣະວັນນະສູງສົ່ງເຖິງພຽງນີ້
ຈະເປັນສະມະນະໄປເຮັດຫຍັງ

[໔໔໗] ພຣະອົງຄວນເປັນພຣະເຈົ້າຈັກກະພັດ
ທີ່ອົງອາດໃນໝູ່ພົນລົດ ຊົງຜາບປາມຊະນະໄພຣີ
ຊົງເປັນໃຫຍ່ໃນພາກພື້ນຊົມພູທະວີບ
ເຊິ່ງມີສະມຸດສາຄອນທັງສີ່ເປັນຂອບເຂດ

[໔໔໘] ຂ້າແດ່ພຣະໂຄດົມ ຂໍເຊີນພຣະອົງຂຶ້ນຄອງຣາດ
ເປັນພຣະເຈົ້າຈັກກະພັດຈອມມະນຸດຕາມພຣະຣາດຊະປະເພນີ
ທີ່ກະສັດຕາທິຣາດໂດຍພຣະຊາດໄດ້ສະເຫວີຍຣາດ
ມີໝູ່ສະເວກາມາດສະເດັດຕາມພຣະອົງເທີ້ນ

[໔໕໐] (ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)
ເສລະພາມ ເຮົາເປັນພຣະຣາຊາຢູ່ແລ້ວ
ຄືເປັນພຣະທຳຣາຊາຜູ້ປະເສີດ
ຍັງທຳມະຈັກທີ່ບໍ່ມີໃຜ ໆ ໝຸນໄປໄດ້ ໃຫ້ໝຸນໄປໄດ້

[໔໕໑] (ເສລະພາມຂາບທູນດັ່ງນີ້)
ຂ້າແດ່ພຣະໂຄດົມ ພຣະອົງຊົງປະຕິຍານວ່າ
ເປັນພຣະສຳມາສຳພຸດທະເຈົ້າ ເປັນພຣະທຳຣາຊາຜູ້ປະເສີດ
ທັງຍັງຕັດຢັ້ງຢືນວ່າຍັງທຳມະຈັກໃຫ້ໝຸນໄປໄດ້

[໔໕໒] ໃຜນໍ ເປັນເສນາບໍດີຂອງພຣະອົງຜູ້ຈະເລີນ
ເປັນສາວົກຜູ້ປະພຶດຕາມເບື້ອງພຣະບາດທັງສອງຂອງພຣະອົງຜູ້ເປັນສາດສະດາ
ໃຜຈະຊ່ອຍປະກາດທຳມະຈັກທີ່ພຣະອົງຊົງໃຫ້ໝຸນໄປແລ້ວນີ້ໄດ້

[໔໕໓] (ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)
ເສລະພາມ ສາຣີບຸດຜູ້ເກີດຕາມຕະຖາຄົດ
ຈະຊ່ອຍປະກາດທຳມະຈັກທີ່ຍອດຢ້ຽມ
ເຊິ່ງເຮົາໃຫ້ໝຸນໄປແລ້ວ

[໔໕໔] ພາມ ເຮົາໄດ້ຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ
ໄດ້ຈະເລີນທຳທີ່ຄວນໃຫ້ຈະເລີນ
ໄດ້ລະທຳທີ່ຄວນລະໄດ້ແລ້ວ
ຍ້ອນແນວນັ້ນ ເຮົາຈຶ່ງເປັນພຣະພຸດທະເຈົ້າ

[໕໒໕] ພາມ ທ່ານຈົ່ງກຳຈັດຄວາມສົງໄສໃນໂຕເຮົາສາ
ຈົ່ງນ້ອມໃຈເຊື່ອເຮົາສາເທີ້ນ
ການໄດ້ເຫັນພຣະສຳມາສຳພຸດທະເຈົ້າຢູ່ສະເໝີ ໆ
ເປັນໂອກາດທີ່ຫາໄດ້ຍາກ

[໕໒໒] ຜູ້ຈະຜາກົດຢູ່ສະເໝີ ໆ ໃນໂລກ
ຍ່ອມເປັນການຫາໄດ້ຍາກ
ພາມ ເຮົານັ້ນ ເປັນພຣະພຸດທະເຈົ້າ
ເປັນໝໍປາດລູກສອນຄືກິເລດຊັ້ນເລີດ

[໕໒໗] ເຮົາເປັນຜູ້ປະເສີດສຸດ ບໍ່ມີຜູ້ປຽບທຽບ
ຍ່ຳຍີມານແລະເສນາມານໄດ້
ຄວບຄຸມອະມິດ°ທັງປວງໄວ້ໃນອຳນາດ
ບໍ່ມີໄພຈາກບ່ອນໃດ ເບີກບານຢູ່

[໕໒໘] (ເສລະພາມກ່າວດັ່ງນີ້)
ຂ້າແດ່ພຣະອົງຜູ້ຈະເລີນ ຂໍເຊີນພຣະອົງ
ຈົ່ງຊົງພິຈາຣະນາຄຳຂອງຂ້າພຣະອົງນີ້
ຄືແນວທີ່ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸ
ເປັນໝໍປາດລູກສອນຄືກິເລດ
ເປັນມະຫາວີຣະໄດ້ຕັດໄວ້
ຄືພະຍາຣາດຊະສີບັນລືສີຫະນາດຢູ່ໃນປ່າ

[໕໒໙] ໃຜເຫັນພຣະຜູ້ມີພຣະພາກເຈົ້າຜູ້ປະເສີດສຸດ
ບໍ່ມີຜູ້ປຽບທຽບ
ຍ່ຳຍີມານແລະເສນາມານໄດ້ ຈຶ່ງຈະບໍ່ເຫຼື້ອມໃສນໍ
ເຖິງຄົນຜູ້ເກີດໃນຕະກູນຕ່ຳກໍຍັງເຫຼື້ອມໃສ

[໕໗໐] ຜູ້ປາຖະໜາຈະມານຳເຮົາ ກໍເຊີນມາ
ຫຼືຜູ້ທີ່ບໍ່ປາຖະໜາ ກໍເຊີນກັບໄປ
ເຮົາຈະບວດໃນສຳນັກຂອງພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະປັນຍາປະເສີດນີ້

[໕໗໑] (ມານົບເຫຼົ່ານັ້ນກ່າວດັ່ງນີ້)

ຫາກທ່ານອາຈານປະທັບໃຈຄຳສອນ
ຂອງພຣະສຳມາສຳພຸດທະເຈົ້າແນວນີ້
ແມ່ນເຮົາທັງຫຼາຍກໍຈະບວດ
ໃນສຳນັກຂອງພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະປັນຍາປະເສີດ

[໕໗໔] ພາມ ໓໐໐ ຄົນນີ້ພາກັນປະນົມມື ທູນຂໍບັນພະຊາວ່າ
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງທັງຫຼາຍ
ຈະປະພຶດພົມມະຈັນໃນສຳນັກຂອງພຣະອົງ

[໕໗໓] (ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)
ເສລະ ພົມມະຈັນ ເຮົາກ່າວໄວ້ດີແລ້ວ
ຜູ້ບັນລຸຈະເຫັນໄດ້ເອງ ໃຫ້ຜົນບໍ່ຈຳກັດການ
ໃນສາດສະໜາທີ່ມີການບັນພະຊາບໍ່ຂາດຜົນ[១]
ເມື່ອຄົນທີ່ບໍ່ຜະໝາດ ໝັ່ນສຶກສາຢູ່

ເສລະພາມພ້ອມທັງບໍລິວານໄດ້ຮັບການບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວ

ຝ່າຍເກນິຍະຊະດິນ ເມື່ອຄືນນັ້ນຜ່ານໄປ ສັ່ງໃຫ້ຈັດຂອງຂົບສັນອັນປະນີດໄວ້ໃນອາສົມຂອງຕົນແລ້ວສົ່ງຄົນໄປຂາບທູນພັດຕະການວ່າ ຂ້າແດ່ພຣະໂຄດົມຜູ້ຈະເລີນ ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ ຂ້ານ້ອຍ

ຂະນະນັ້ນ ເປັນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດໄປສູ່ອາສົມຂອງເກນິຍະຊະດິນແລ້ວປະທັບນັ່ງເໜືອອາສະນະທີ່ເຂົາປູໄວ້ ພ້ອມດ້ວຍພິກຂຸສົງ

ຈາກນັ້ນ ເກນິຍະຊະດິນໄດ້ນຳຂອງຂົບສັນອັນປະນີດ ປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານໃຫ້ອີ່ມໜຳສຳຣານ ດ້ວຍຕົນເອງ ເມື່ອພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວຊົງວາງພຣະຫັດ ເກນິຍະຊະດິນເລືອກເອົາອາສະນະຕ່ຳແຫ່ງໜຶ່ງແລ້ວນັ່ງຢູ່ບ່ອນທີ່ສົມຄວນ

## ພຣະພຸດທະເຈົ້າຊົງອະນຸໂມທະນາແກ່ເກນິຍະຊະດິນ

ພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາແກ່ເກນິຍະຊະດິນດ້ວຍພຣະຄາຖາດັ່ງນີ້

[໕໗໔] ການບູຊາໄຟເປັນການບູຊາຍັນອັນປະເສີດ
ວ່າດ້ວຍເລື້ອງສັນ ສາວິຕຣີສັນເປັນສັນອັນດັບທໍາອິດ
ພຣະຣາຊາເປັນປະມຸກຂອງມະນຸດທັງຫຼາຍ
ສະມຸດສາຄອນເປັນສູນລວມແຫ່ງແມ່ນໍ້າທັງຫຼາຍ

[໕໗໕] ດາວເລີກທັງຫຼາຍ ມີດວງຈັນແຈ່ມກວ່າ
ມວນຄວາມຮ້ອນມີດວງອາທິດເປັນເຈົ້າ
ໝູ່ຊົນຜູ້ມຸ້ງສະແຫວງບຸນຢູ່ມີພຣະສົງທີ່ນັ້ນ
ເປັນທາງຈະເລີນແຫ່ງບຸນແທ້ຈິງຂອງຜູ້ບູຊາ

ເມື່ອພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາແກ່ເກນີຍະຊະດິນດ້ວຍພຣະຄາຖາເຫຼົ່ານີ້ ແລ້ວກໍສະເດັດລຸກຈາກອາສະນະຈາກໄປ

ຕໍ່ມາ ທ່ານພຣະເສລະພ້ອມດ້ວຍພິກຂຸຜູ້ເປັນບໍລິວານຈາກໄປຢູ່ພຽງລໍາພັງ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ກຸນລະບຸດທັງຫຼາຍອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ຈຶ່ງເປັນອັນວ່າ ທ່ານພຣະເສລະພ້ອມດ້ວຍພິກຂຸຜູ້ເປັນບໍລິວານໄດ້ເປັນພຣະອະຣະຫັນຈໍານວນໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

ຄັ້ງນັ້ນ ທ່ານພຣະເສລະພ້ອມດ້ວຍພິກຂຸຜູ້ເປັນບໍລິວານໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຫົ່ມຈີວອນບ່ຽງບ່າ ປະຄອງອັນຊະລີໄປທາງພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນດ້ວຍຄາຖາວ່າ

[໕໗໖] ຂ້າແດ່ ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸ
ຂ້າພຣະອົງທັງຫຼາຍເຖິງພຣະອົງເປັນສະຣະນະຄົບ ໘ ມື້ນັບຈາກມື້ນີ້
ຈຶ່ງເປັນອັນວ່າຂ້າພຣະອົງທັງຫຼາຍເຝິກຝົນຕົນສໍາເລັດ
ໃນສາດສະໜາຂອງພຣະອົງໃຊ້ເວລາ ໗ ມື້ທີ່ນັ້ນ

[໕໗໗] ພຣະອົງຊົງເປັນສັບພັນຍູພຸດທະເຈົ້າ
ເປັນພຣະສາດສະດາ ເປັນພຣະມຸນີຄອບງໍາມານໄດ້
ຊົງຕັດອະນຸໄສກິເລດໄດ້ ຊົງຂ້າມແມ່ນໍ້າໃຫຍ່ຄືສົງສານໄດ້ແລ້ວ

ຍັງຊົງຊ່ອຍໝູ່ສັດນີ້ໃຫ້ຂ້າມໄປນຳໄດ້ດ້ວຍ

[໕໗໗] ພຣະອົງຊົງລ່ວງພົ້ນອຸປະທິກິເລດໄດ້
ທຳລາຍອາສະວະໄດ້ແລ້ວ ບໍ່ມີອຸປາທານ
ລະຄວາມຢ້ານກົວໄພໄດ້ ຄືພະຍາຣາດຊະສີບໍ່ຢ້ານຕໍ່ໝູ່ເນື້ອ[១]

[໕໗໘] ພິກຂຸ ໕໐໐ ອົງນີ້ ຢືນປະນົມມືຂາບທູນວ່າ
ຂ້າແດ່ ພຣະອົງຜູ້ຊົງແກ່ກ້າ
ຂໍພຣະອົງໂຜດຢຽດພຣະບາດທັງສອງອອກມາເທີ້ນ
ຂໍເຊີນທ່ານຜູ້ປະເສີດທັງຫຼາຍ
ຖວາຍອະພິວາດພຣະບາດທັງສອງຂອງພຣະສາດສະດາເທີ້ນ

**ເສລະສູດທີ ໗ ຈົບ**

# ໘. ສັນລະສູດ

## ວ່າດ້ວຍລູກສອນຄືກິເລດ

(ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະສູດນີ້ແກ່ອຸປາສົກຄົນໜຶ່ງຜູ້ໂສກເສົ້າຍ້ອນບຸດຕາຍດ້ວຍພຣະຄາຖາດັ່ງນີ້)

[໕໘໐] ຊີວິດຂອງສັດທັງຫຼາຍໃນໂລກນີ້
ບໍ່ມີນິມິດ[១] ໃຜ ໆ ຮູ້ບໍ່ໄດ້ ທັງລຳບາກ
ສັ້ນບໍ່ຫຼາຍ ແລະປະກອບດ້ວຍທຸກ

[໕໘໑] ວິທີທີ່ສັດຜູ້ເກີດມາແລ້ວຈະບໍ່ຕາຍຍ່ອມບໍ່ມີ
ແມ່ນຈະຢູ່ໄປຈົນເຖິງຊະຣາ ກໍຈະຕ້ອງເຖິງແກ່ຄວາມຕາຍ
ຍ້ອນສັດທັງຫຼາຍມີຄວາມຕາຍແນວນີ້ເປັນທຳມະດາ

[໕໘໒] ສັດທີ່ເກີດມາແລ້ວ ມີໄພຈາກຄວາມຕາຍເປັນປະຈຳ
ຄືໝາກໄມ້ສຸກແລ້ວມີໄພຈາກການຫຼົ່ນໄປໃນເວລາເຊົ້າ ສັນນັ້ນ

[໕໘໓] ພາຊະນະດິນທີ່ຊ່າງໝໍ້ເຮັດໄວ້ທັງໝົດ
ມີຄວາມແຕກເປັນບ່ອນສຸດ ສັນໃດ
ຊີວິດຂອງສັດທັງຫຼາຍ ກໍເປັນສັນນັ້ນ

[໕໗໔] ມະນຸດ ທັງເດັກ ຜູ້ໃຫຍ່ ໂງ່ ແລະສະຫຼາດ ທັງໝົດ
ຍ່ອມໄປສູ່ອຳນາດຄວາມຕາຍ ມີຄວາມຕາຍຖ້າຢູ່ທາງໜ້າ

[໕໗໕] ເມື່ອມະນຸດເຫຼົ່ານັ້ນຖືກຄວາມຕາຍຄອບງຳຢູ່
ກຳລັງຈະຈາກໂລກນີ້ໄປສູ່ປະຣະໂລກ
ບິດາກໍຕ້ານທານບຸດໄວ້ບໍ່ໄດ້
ຫຼືໝູ່ຍາດກໍຕ້ານທານຍາດໄວ້ບໍ່ໄດ້

[໕໗໖] ເມື່ອພວກຍາດ ກຳລັງຈ້ອງແນມເບິ່ງຢູ່
ຮ່ຳໄຮກັນຫຼວງຫຼາຍຢູ່ນັ້ນແລວ່າ ຈົ່ງເບິ່ງສັດແຕ່ລະຕົນ ໆ
ຖືກຄວາມຕາຍນຳໄປ ຄືງົວຖືກນຳໄປຂ້າ ສັນນັ້ນ

[໕໗໗] ສັດໂລກຖືກຄວາມແກ່ແລະຄວາມຕາຍຄອບງຳຢູ່ແນວນີ້[?]
ຍ້ອນແນວນັ້ນ ນັກປາດທັງຫຼາຍຮູ້ແຈ້ງ
ຄວາມເປັນຈິງຂອງສັດໂລກແລ້ວ ຍ່ອມບໍ່ເສົ້າໂສກ

[໕໗໘] ທ່ານບໍ່ຮູ້ທາງຂອງຜູ້ມາຫຼືຜູ້ໄປ
ເມື່ອບໍ່ເຫັນບ່ອນສຸດທັງ ໔ ນີ້ ເຖິງຈະຮ່ຳໄຮໄປກໍຂາດປະໂຫຍດ

[໕໗໙] ຫາກຜູ້ທີ່ຫຼົງຮ່ຳໄຮ ບຽດບຽນຕົນຢູ່
ຈະເພິ່ງນຳປະໂຫຍດອັນໃດມາໄດ້ແດ່
ບັນດິດຜູ້ມີປັນຍາເຫັນປະຈັກກໍຈະເພິ່ງກະທຳເຊັ່ນນັ້ນແດ່[໒]

[໕໘໐] ບຸກຄົນຈະໄດ້ຮັບຄວາມສະງົບໃຈ ຍ້ອນການຮ້ອງໄຫ້
ຍ້ອນຄວາມໂສກເສົ້າກໍບໍ່ມີ
ທຸກຍ່ອມເກີດແກ່ຜູ້ນັ້ນຍິ່ງຂຶ້ນ
ແລະຮ່າງກາຍຂອງເຂົາມີແຕ່ຈະຊີດຊຽວລົງ

[໕໘໑] ຜູ້ທີ່ບຽດບຽນຕົນເອງ ຍ່ອມຈະຊູບຜອມ ບໍ່ຜ່ອງໃສ
ສັດທັງຫຼາຍຜູ້ລະໄປສູ່ປະຣະໂລກ
ບໍ່ຄຸ້ມຄອງຕົນຢູ່ດ້ວຍການຮ່ຳໄຮນັ້ນໄດ້
ດັ່ງນັ້ນ ການຮ່ຳໄຮຈຶ່ງເປັນສິ່ງທີ່ຂາດປະໂຫຍດ[໑]

[໕໘໒] ຜູ້ທອດຖອນໃຈເຖິງຄົນທີ່ຕາຍໄປແລ້ວຢູ່ສະເໝີ
ບັນເທົາຄວາມໂສກເສົ້າບໍ່ໄດ້

ຕົກຢູ່ໃນອຳນາດແຫ່ງຄວາມໂສກເສົ້າ
ຍ່ອມໄດ້ຮັບທຸກຫຼາຍຂຶ້ນ

[໕໙໓] ທ່ານຈົ່ງເບິ່ງແມ່ນຄົນເຫຼົ່າອື່ນຜູ້ໃກ້ຈະຕາຍໄປຕາມກຳ
ແລະສັດທັງຫຼາຍໃນໂລກນີ້ ຜູ້ຕົກຢູ່ໃນອຳນາດມັດຈຸຣາດ
ຕ່າງພາກັນດີ້ນຮົນຢູ່ທັ້ງຫຼາຍ

[໕໙໔] ອາການໃດ ໆ ທີ່ສັດທັງຫຼາຍສຳຄັນໝາຍ
ອາການນັ້ນ ໆ ຍ່ອມຜັນແປເປັນອື່ນໄປ໌
ການພັດພາກຈາກກັນແລະກັນແບບນີ້ ມີຢູ່ເປັນປະຈຳ
ທ່ານຈົ່ງພິຈາລະນາເບິ່ງຄວາມເປັນຈິງຂອງສັດໂລກເທີ້ນ

[໕໙໕] ບຸກຄົນແມ່ນຈະດຳລົງຊີວິດຢູ່ເຖິງ ໑໐໐ ປີ
ຫຼືເກີນໄປແດ່ກໍຕາມ ກໍຕ້ອງພັດພາກຈາກໝູ່ຍາດ
ແລະຕ້ອງລະຖິ້ມຊີວິດໄວ້ໃນໂລກນີ້ແນ່ນອນ

[໕໙໖] ຍ້ອນແນວນັ້ນ ບຸກຄົນຟັງທຳມະເທດສະໜາຂອງພຣະອະຣະຫັນແລ້ວ
ເຫັນຄົນລ່ວງລັບດັບຊີວິດໄປ ກຳນົດຮູ້ວ່າຜູ້ລ່ວງລັບດັບຊີວິດໄປນັ້ນ
ບໍ່ສາມາດຟື້ນຄືນຊີວິດຢູ່ຮ່ວມກັບເຮົາໄດ້ອີກ
ຄວນກຳຈັດຄວາມຮ່ຳໄຮ

[໕໙໗] ທີຣະຊົນຜູ້ມີປັນຍາ ສະຫຼາດປາດເປື່ອງ
ຄວນກຳຈັດຄວາມໂສກເສົ້າທີ່ເກີດຂຶ້ນໂດຍທັນທີ
ຄືລົມພັດນຸ່ນປິວໄປ
ຄືຄົນໃຊ້ນ້ຳດັບໄຟທີ່ກຳລັງໄໝ້ລຸກລາມ ສັນນັ້ນ

[໕໙໘] ບຸກຄົນຜູ້ສະແຫວງຫາຄວາມສຸກແກ່ຕົນ
ຄວນກຳຈັດຄວາມຮ່ຳໄຮ ຄວາມທະຍານຢາກ
ແລະໂທມະນັດຂອງຕົນ
ຄວນຖອນລູກສອນຄືກິເລດຂອງຕົນ

[໕໙໙] ບຸກຄົນຜູ້ຖອນລູກສອນຄືກິເລດໄດ້ແລ້ວ
ເປັນຜູ້ບໍ່ມີຕັນຫາແລະທິດຖິອາໄສ
ເຖິງຄວາມສະງົບໃຈ ລ່ວງພົ້ນຄວາມໂສກເສົ້າໄດ້ທັງໝົດ

ບໍ່ມີຄວາມເສົ້າໂສກ ຊື່ວ່າດັບກິເລດໄດ້ແລ້ວ

**ສັນລະສູດທີ ໗ ຈົບ**

## ໘. ວາເສດຖະສູດ

## ວ່າດ້ວຍວາເສດຖະມານົບທູນຖາມບັນຫາ

ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ແຄມປ່າອິດສານັງຄະລະ ໃກ້ໝູ່ບ້ານ ອິດສານັງຄະລະ ສະໄໝນັ້ນ ພາມມະຫາສານມີຊື່ສຽງເປັນຈຳນວນຫຼາຍ ຄື ຈັງກີພາມ ຕາຣຸກຂະພາມ ໂປກຂະຣະສາຕິພາມ ຊານຸດໂສນິພາມ ໂຕເທີຍຍະພາມ ແລະພາມມະຫາສານມີຊື່ສຽງອື່ນ ໆ ອາໄສຢູ່ໃນໝູ່ບ້ານອິດສານັງຄະລະ

ຄັ້ງນັ້ນ ວາເສດຖະມານົບແລະພາຣະທະວາຊະມານົບກຳລັງຍ່າງຫຼິ້ນພັກຜ່ອນ ລະຫວ່າງນັ້ນໄດ້ສົນທະນາເຖິງຂໍ້ຄວາມນີ້ວ່າ ເພື່ອນເອີຍ ບຸກຄົນຊື່ວ່າພາມ ໂດຍວິທີແນວໃດ

ພາຣະທະວາຊະມານົບກ່າວແນວນີ້ວ່າ ເພື່ອນເອີຍ ບຸກຄົນທີ່ເກີດມາດີທັງ ໒ ຝ່າຍ ຄືທັງຝ່າຍມານດາແລະຝ່າຍບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັບພະບຸຣຸດ ບໍ່ມີໃຜ ຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ເພື່ອນເອີຍ ຍ້ອນເຫດດັ່ງກ່າວມານີ້ ບຸກຄົນນັ້ນຈຶ່ງຊື່ວ່າ ພາມ

ວາເສດຖະມານົບກ່າວແນວນີ້ວ່າ ເພື່ອນເອີຍ ບຸກຄົນເປັນຜູ້ມີສິນ ສົມບູນດ້ວຍຂໍ້ວັດປະຕິບັດ ຍ້ອນເຫດດັ່ງກ່າວມານີ້ຈຶ່ງຊື່ວ່າ ພາມ

ພາຣະທະວາຊະມານົບບໍ່ສາມາດໃຫ້ວາເສດຖະມານົບຍອມຮັບເຫດຜົນຂອງຕົນໄດ້ ຝ່າຍວາເສດຖະມານົບກໍບໍ່ສາມາດໃຫ້ພາຣະທະວາຊະມານົບຍອມຮັບເຫດຜົນຂອງຕົນໄດ້ເຊັ່ນກັນ

ລຳດັບນັ້ນ ວາເສດຖະມານົບໄດ້ກ່າວຄືເປີກສາກັບພາຣະທະວາຊະມານພວ່າ ພາຣະທະວາຊະ ເພື່ອນຮັກ ພຣະສະມະນະໂຄດົມສາກະຍະບຸດພຣະອົງນີ້ສະເດັດອອກບວດຈາກສາກະຍະຕະກູນ ປະທັບຢູ່ທີ່ແຄມປ່າອິດສານັງຄະລະ ໃກ້ໝູ່ບ້ານອິດສານັງຄະລະ ກໍທ່ານພຣະໂຄດົມນັ້ນມີກິດຕິສັບອັນງາມຂ່າລືໄປແນວນີ້ວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ພາຣະທະວາຊະເພື່ອນຮັກ ເຮົາທັງ

ສອງເຂົ້າໄປເຝົ້າພຣະສະມະນະໂຄດົມ ຢູ່ບ່ອນປະທັບກັນເທີ້ນ ແລ້ວເຮົາຈະທູນຖາມເຖິງເລື້ອງນີ້ກັບພຣະອົງ ຈະໄດ້ຈົດຈຳຂໍ້ຄວາມທີ່ພຣະອົງຊົງພະຍາກອນແກ່ເຮົາ

ພາຣະທະວາຊະມານົບຮັບຄຳວາເສດຖະມານົບວ່າ ແນວນັ້ນກໍໄດ້ໝູ່

ຕໍ່ຈາກນັ້ນ ວາເສດຖະມານົບ ແລະພາຣະທະວາຊະມານົບໄດ້ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ວາເສດຖະມານົບໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາ ວ່າ

[໖໐໐] ຂ້າພຣະອົງທັງສອງເປັນຜູ້ໄດ້ຮັບຍ້ອງຍໍ
ແລະຮັບຮອງຈາກອາຈານວ່າ ເປັນຜູ້ໄດ້ສຶກສາຈົບໄຕຣເພດ
ຂ້າພຣະອົງເປັນຫົວໜ້າສິດຂອງໂປກຂະຣະສາຕິພານ
ສ່ວນພາຣະທະວາຊະມານົບນີ້ເປັນຫົວໜ້າສິດຂອງຕາຣຸກຂະພານ

[໖໐໑] ຂ້າພຣະອົງທັງສອງ ສຶກສາຈົບໄຕຣເພດ
ຕາມທີ່ອາຈານຜູ້ແຕກສານອົບຮົມສັ່ງສອນ
ເປັນຜູ້ເຂົ້າໃຈໂຕບົດ ຊ່ຽວຊານໄວຍາກອນ
ໃນພຣະເວດທຽບເທົ່າອາຈານ

[໖໐໒] ຂ້າແດ່ພຣະໂຄດົມ ຂ້າພຣະອົງທັງສອງນັ້ນເກີດໂຕ້ຖຽງກັນ
ໃນເລື້ອງເຫດທີ່ເຮັດໃຫ້ບຸກຄົນເປັນພານ
ພາຣະທະວາຊະມານົບກ່າວວ່າ
ບຸກຄົນເປັນພານ ຍ້ອນຊາດກຳເນີດ
ສ່ວນຂ້າພຣະອົງກ່າວວ່າ
ບຸກຄົນເປັນພານ ຍ້ອນກຳ
ຂ້າແດ່ພຣະອົງຜູ້ມີພຣະຈັກຂຸ
ຂໍພຣະອົງຊົງຮູ້ແນວນີ້ເທີ້ນ

[໖໐໓] ຂ້າພຣະອົງທັງສອງນັ້ນບໍ່ສາມາດຕົກລົງກັນໄດ້
ຈຶ່ງພາກັນມາທູນຖາມພຣະອົງຜູ້ຊົງຜາກົດພຣະນາມວ່າ
ເປັນພຣະສຳມາສຳພຸດທະເຈົ້າ

[໖໐໔] ຂ້າພຣະອົງທັງສອງປະນົມມືຖວາຍນະມັດສະການພຣະອົງ

ຜູ້ເປັນພຣະສຳມາສຳພຸດທະເຈົ້າໃນໂລກ
ຄືຊິນທັງຫຼາຍປະນົມມື
ນ້ອມໄຫວ້ພຣະຈັນນີ້ເພັງໂດຍທົ່ວເຖິງກັນ

[ຜ໐໕] ຂ້າພຣະອົງທັງສອງຂໍທູນຖາມພຣະໂຄດົມຜູ້ມີພຣະຈັກຂຸ
ຜູ້ສະເດັດອຸບັດດີແລ້ວໃນໂລກວ່າ
ບຸກຄົນເປັນພາມຍ້ອນຊາດກຳເນີດ
ຫຼືຍ້ອນກຳນໍ
ຂໍພຣະອົງໂຜດຕັດບອກຂ້າພຣະອົງທັງສອງ
ຜູ້ບໍ່ຮູ້ໃຫ້ຮູ້ຈັກພາມທີ່ແທ້ຈິງຈິງດ້ວຍເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[ຜ໐໖] ວາເສດຖະ ເຮົາຈະພະຍາກອນເຖິງຄວາມພິດສະດານ
ແຫ່ງຊາດກຳເນີດຂອງສັດທັງຫຼາຍ
ຕາມລຳດັບຄວາມເໝາະສົມແກ່ທ່ານ
ຍ້ອນວ່າສັດທັງຫຼາຍມີຊາດກຳເນີດແຕກຕ່າງກັນຫຼາຍເຜົ່າພັນ

[ຜ໐໗] ທ່ານທັງຫຼາຍຍ່ອມຮູ້ຈັກຫຍ້າແລະຕົ້ນໄມ້
ແຕ່ຫຍ້າແລະຕົ້ນໄມ້ກໍບໍ່ຍອມຮັບວ່າເປັນຫຍ້າເປັນຕົ້ນໄມ້
ຫຍ້າແລະຕົ້ນໄມ້ນັ້ນມີສັນຖານສຳເລັດມາແຕ່ກຳເນີດ
ຍ້ອນທຳມະຊາດຂອງມັນຕ່າງກັນ

[ຜ໐໘] ຕໍ່ໄປ ທ່ານທັງຫຼາຍຈົ່ງຮູ້ຈັກແມງ ຕັກກະແຕນ
ຕະຫຼອດຈົນເຖິງມົດດຳ ມົດແດງ
ສັດເຫຼົ່ານັ້ນຕ່າງມີຮູບຮ່າງສັນຖານໄປຕາມກຳເນີດ
ຍ້ອນກຳເນີດຂອງສັດເຫຼົ່ານັ້ນຕ່າງກັນ

[ຜ໐໙] ທ່ານທັງຫຼາຍຈົ່ງຮູ້ຈັກສັດສີ່ຕີນ ທັງຂະໜາດນ້ອຍ ຂະໜາດໃຫຍ່
ສັດເຫຼົ່ານັ້ນມີຮູບຮ່າງສັນຖານໄປຕາມກຳເນີດ
ຍ້ອນກຳເນີດຂອງສັດເຫຼົ່ານັ້ນຕ່າງກັນ

[ຜ໑໐] ທ່ານທັງຫຼາຍຈົ່ງຮູ້ຈັກສັດເລືອຄານ
ທີ່ໃຊ້ທ້ອງແທນຕີນ ມີສັນຫຼັງຍາວ

ສັດເຫຼົ່ານັ້ນມີຮູບຮ່າງສັນຖານໄປຕາມກຳເນີດ
ຍ້ອນກຳເນີດຂອງສັດເຫຼົ່ານັ້ນຕ່າງກັນ

[ຜ໑໑] ຕໍ່ໄປ ທ່ານທັງຫຼາຍຈົ່ງຮູ້ຈັກປາ
ແລະສັດນ້ຳປະເພດອື່ນທີ່ເກີດທ່ຽວຫາກິນຢູ່ໃນນ້ຳ
ສັດເຫຼົ່ານັ້ນມີຮູບຮ່າງສັນຖານໄປຕາມກຳເນີດ
ຍ້ອນກຳເນີດຂອງສັດເຫຼົ່ານັ້ນຕ່າງກັນ

[ຜ໑໒] ຕໍ່ໄປ ທ່ານທັງຫຼາຍຈົ່ງຮູ້ຈັກສັດປີກທີ່ບິນໄປໃນອາກາດ
ສັດເຫຼົ່ານັ້ນມີຮູບຮ່າງສັນຖານໄປຕາມກຳເນີດ
ຍ້ອນກຳເນີດຂອງສັດເຫຼົ່ານັ້ນຕ່າງກັນ

[ຜ໑໓] ໃນໝູ່ມະນຸດ ບໍ່ມີຮູບຮ່າງສັນຖານແຕກຕ່າງກັນໄປ
ຕາມກຳເນີດຫຼວງຫຼາຍ ຄືກຳເນີດຂອງສັດເຫຼົ່ານີ້ເລີຍ

[ຜ໑໔] ຄື ບໍ່ມີການກຳນົດວ່າ ເປັນພາມ ເປັນກະສັດເປັນຕົ້ນ
ດ້ວຍຜົມ ຫົວ ໃບຫູ ໜ່ວຍຕາ ໃບໜ້າ ດັງ ຮີມປາກ ຄິ້ວ

[ຜ໑໕] ຄໍ ບ່າ ທ້ອງ ຫຼັງ ສະໂພກ ເອິກ
ຊອກອະໄວຍະວະ ອະໄວຍະວະສືບພັນ

[ຜ໑໖] ມື ຕີນ ນິ້ວມື ເລັບ ແຂ່ງ ຂາອ່ອນ
ຜິວພັນ ຫຼືສຽງ
ໃນໝູ່ມະນຸດຈຶ່ງບໍ່ມີຮູບຮ່າງສັນຖານ
ແຕກຕ່າງກັນຕາມກຳເນີດຫຼວງຫຼາຍ
ຄືໃນກຳເນີດອື່ນ ໆ ເລີຍ

[ຜ໑໗] ໃນໝູ່ມະນຸດບໍ່ມີລັກສະນະສະເພາະໂຕໃນສະຣີຣະຂອງແຕ່ລະຄົນ
ແລະໃນໝູ່ມະນຸດ ການຮຽກຊື່ຕ່າງກັນວ່າ ພາມ ກະສັດ ເປັນຕົ້ນ
ທ່ານບັນຍັດຮຽກພຽງໂວຫານ

[ຜ໑໘] ໃນໝູ່ມະນຸດ ໃຜກໍຕາມອາໄສໂຄຣັກຂະກຳລ້ຽງຊີບ
ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
ຜູ້ນັ້ນຮຽກວ່າ ຊາວນາ ບໍ່ຮຽກວ່າ ພາມ

[໖໑໗]  ໃນໝູ່ມະນຸດ ໃຜກໍຕາມລ້ຽງຊີບ
ດ້ວຍການຊ່າງສີມືອັນເປັນສິລະປະຕ່າງ ໆ
ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
ຜູ້ນັ້ນຮຽກວ່າ ຊ່າງສິລະປະ ບໍ່ຮຽກວ່າ ພາມ

[໖໘໐]  ໃນໝູ່ມະນຸດ ໃຜກໍຕາມອາໄສການຄ້າຂາຍລ້ຽງຊີບ
ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
ຜູ້ນັ້ນຮຽກວ່າ ພໍ່ຄ້າ ບໍ່ຮຽກວ່າ ພາມ

[໖໘໑]  ໃນໝູ່ມະນຸດ ໃຜກໍຕາມລ້ຽງຊີບດ້ວຍການຮັບໃຊ້ຜູ້ອື່ນ
ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
ຜູ້ນັ້ນຮຽກວ່າ ຄົນຮັບໃຊ້ ບໍ່ຮຽກວ່າ ພາມ

[໖໘໒]  ໃນໝູ່ມະນຸດ ໃຜກໍຕາມອາໄສການລັກຊັບຜູ້ອື່ນລ້ຽງຊີບ
ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
ຜູ້ນັ້ນຮຽກວ່າ ໂຈນ ບໍ່ຮຽກວ່າ ພາມ

[໖໘໓]  ໃນໝູ່ມະນຸດ ໃຜກໍຕາມອາໄສລູກສອນແລະອາວຸດລ້ຽງຊີບ
ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
ຜູ້ນັ້ນຮຽກວ່າ ທະຫານອາຊີບ ບໍ່ຮຽກວ່າ ພາມ

[໖໘໔]  ໃນໝູ່ມະນຸດ ໃຜກໍຕາມລ້ຽງຊີບດ້ວຍການເປັນປຸໂລຫິດ
ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
ຜູ້ນັ້ນຮຽກວ່າ ຜູ້ເປັນທີ່ເຄົາລົບບູຊາ ບໍ່ຮຽກວ່າ ພາມ

[໖໘໕]  ໃນໝູ່ມະນຸດ ໃຜກໍຕາມປົກຄອງທ້ອງຖິ່ນແລະແວ່ນແຄວ້ນ
ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
ຜູ້ນັ້ນຮຽກວ່າ ພຣະຣາຊາ ບໍ່ຮຽກວ່າ ພາມ

[໖໘໖]  ຜູ້ຖືກຳເນີດຈາກມານດາ (ທີ່ເປັນພາມ)
ເຮົາບໍ່ຮຽກວ່າ ພາມ
ເຂົາເປັນພຽງຜູ້ຊື່ວ່າ ໂພວາທິ ທໍ່ນັ້ນ
ເຂົາຍັງມີກິເລດເຄື່ອງກັງວົນ
ແຕ່ເຮົາຮຽກຜູ້ທີ່ບໍ່ມີກິເລດເຄື່ອງກັງວົນ
ບໍ່ຖືໝັ້ນທໍ່ນັ້ນວ່າ ພາມ[๑]

[໖໔໗] ຜູ້ຕັດສັງໂຍດໄດ້ໝົດສິ້ນ ບໍ່ສະດຸ້ງ
ຜູ້ລ່ວງພົ້ນກິເລດເຄື່ອງຂ້ອງໄດ້ ຜູ້ປາສະຈາກໂຍຄະ
ເຮົາຮຽກວ່າ ພາມ

[໖໔໘] ຜູ້ຕັດຊະເນາະ ເຊືອກໜັງ ແລະເງື່ອນ
ພ້ອມທັງສາຍຮັດໄດ້ ຖອດຫຼົ້ມໄລ ເປັນຜູ້ຕັດສະຣູ້ແລ້ວ
ເຮົາຮຽກວ່າ ພາມ

[໖໔໙] ຜູ້ບໍ່ປະທຸດສະຮ້າຍ ອົດກັ້ນຄຳດ່າ
ການຂ້າ ແລະການຄຸມຂັງໄດ້
ມີຂັນຕິເປັນພະລັງ ມີຂັນຕິເປັນກຳລັງພົນ
ເຮົາຮຽກວ່າ ພາມ

[໖໕໐] ຜູ້ບໍ່ມັກໂກດ ມີສິນ ມີຂໍ້ວັດປະຕິບັດ
ບໍ່ມີຕັນຫາເຄື່ອງຟູຂຶ້ນ ເຝິກຕົນໄດ້ແລ້ວ
ມີສະຣີຣະເປັນຮ່າງກາຍສຸດທ້າຍ
ເຮົາຮຽກວ່າ ພາມ

[໖໕໑] ຜູ້ໃດບໍ່ຕິດໃນການທັງຫຼາຍ
ຄືນ້ຳບໍ່ຕິດຢູ່ເທິງໃບບົວ
ຄືໄນຜັກກາດບໍ່ຕິດຢູ່ເທິງປາຍເຫຼັກແຫຼມ
ເຮົາຮຽກຜູ້ນັ້ນວ່າ ພາມ

[໖໕໔] ຜູ້ໃດໃນທຳວິໄນນີ້ ຮູ້ແຈ້ງຄວາມສິ້ນທຸກຂອງຕົນ
ປົງພາຣະໄດ້ແລ້ວ ປາສະຈາກໂຍຄະ
ເຮົາຮຽກຜູ້ນັ້ນວ່າ ພາມ

[໖໕໕] ຜູ້ມີປັນຍາເລິກເຊິ່ງ ເປັນນັກປາດ
ສະຫຼາດໃນທາງແລະບໍ່ແມ່ນທາງ
ບັນລຸປະໂຫຍດສູງສຸດ
ເຮົາຮຽກວ່າ ພາມ

[໖໕໔] ຜູ້ບໍ່ຄຸກຄີກັບຄົນ ໔ ຈຳພວກ
ຄື ຄະລືຫັດ ແລະບັນພະຊິດ

ບໍ່ມີຄວາມອາໄລຫ່ວງໄປ ມີຄວາມປາຖະໜາໜ້ອຍ
ເຮົາຮຽກວ່າ ພາມ

[໓໘໕] ຜູ້ໃດລະວາງການລົງໂທດໃນສັດທັງຫຼາຍ
ບໍ່ວ່າຈະເປັນສັດທີ່ຍັງຕື່ນຕົກໃຈ ແລະສັດທີ່ໝັ້ນຄົງ
ບໍ່ຂ້າເອງ ບໍ່ໃຊ້ໃຫ້ຄົນອື່ນຂ້າ
ເຮົາຮຽກຜູ້ນັ້ນວ່າ ພາມ

[໓໘໖] ຜູ້ບໍ່ມຸ້ງຮ້າຍໃນໝູ່ຄົນຜູ້ມຸ້ງຮ້າຍ
ຜູ້ສະງົບໃນໝູ່ຄົນຜູ້ມັກຫາເລື້ອງໃສ່ຕົນ
ຜູ້ບໍ່ຖືໝັ້ນໃນໝູ່ຄົນຜູ້ຖືໝັ້ນ
ເຮົາຮຽກວ່າ ພາມ

[໓໘໗] ຜູ້ໃດເຮັດຣາຄະ ໂທສະ ໂມຫະ ມານະ ແລະມັກຂະໃຫ້ຕົກໄປ
ຄືໃນຜັກກາດຕົກໄປຈາກປາຍເຫຼັກແຫຼມ
ເຮົາຮຽກຜູ້ນັ້ນວ່າ ພາມ

[໓໘໘] ຜູ້ກ່າວຄຳທີ່ບໍ່ຫຍາບຄາຍ ສື່ຄວາມໝາຍໄດ້
ເປັນຄຳຈິງ ບໍ່ເປັນເຫດໃຫ້ໃຜ ໆ ຂັດເຄືອງ
ເຮົາຮຽກວ່າ ພາມ

[໓໘໙] ຜູ້ໃດໃນໂລກນີ້ ບໍ່ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້
ບໍ່ວ່າຍາວຫຼືສັ້ນ ນ້ອຍຫຼືໃຫຍ່ ງາມບໍ່ງາມ
ເຮົາຮຽກຜູ້ນັ້ນວ່າ ພາມ

[໓໙໐] ຜູ້ໃດບໍ່ມີຄວາມຫວັງໃນໂລກນີ້ແລະໂລກໜ້າ
ປາສະຈາກຄວາມຫວັງ ປາສະຈາກໂຍຄະ
ເຮົາຮຽກຜູ້ນັ້ນວ່າ ພາມ

[໓໙໑] ຜູ້ໃດບໍ່ມີຄວາມອາໄລ ໝົດຄວາມສົງໄສຍ້ອນຮູ້ແຈ້ງ
ຢັ່ງລົງສູ່ອະມະຕະ ບັນລຸແລ້ວ
ເຮົາຮຽກຜູ້ນັ້ນວ່າ ພາມ

[໓໙໒] ຜູ້ໃດໃນໂລກນີ້ລະບຸນແລະບາບທັງສອງໄດ້
ພົ້ນຈາກກິເລດເຄື່ອງຂ້ອງໄດ້ ບໍ່ເສົ້າໝອງ

ປາສະຈາກກິເລດຄືທຸລີ ເປັນຜູ້ບໍລິສຸດ
ເຮົາຮຽກຜູ້ນັ້ນວ່າ ພາມ

[໔໑໓] ຜູ້ບໍລິສຸດຄືຈັນແຈ່ມ
ມີຈິດຜ່ອງໃສ ບໍ່ຂຸ່ນມົວ
ເປັນຜູ້ສິ້ນຄວາມຍິນດີໃນພົບ
ເຮົາຮຽກວ່າ ພາມ

[໔໑໔] ຜູ້ໃດກ້າວພົ້ນທາງອ້ອມ[໑]ທາງຫຼົ່ມ[໒]
ສົງສານ ແລະໂມຫະໄດ້ແລ້ວ
ຂ້າມໄປເຖິງຝັ່ງແລ້ວ ຈະເລີນຊານ
ບໍ່ຫວັ່ນໄຫວ ໝົດຄວາມສົງໄສ
ດັບເຢັນ ຍ້ອນບໍ່ຖືໝັ້ນ
ເຮົາຮຽກຜູ້ນັ້ນວ່າ ພາມ

[໔໑໕] ຜູ້ໃດໃນໂລກນີ້ລະກາມໄດ້ແລ້ວ
ອອກບວດເປັນບັນພະຊິດ
ເປັນຜູ້ສິ້ນກາມແລະພົບ
ເຮົາຮຽກຜູ້ນັ້ນວ່າ ພາມ

[໔໑໖] ຜູ້ໃດໃນໂລກນີ້ລະຕັນຫາໄດ້ເດັດຂາດ
ອອກບວດເປັນບັນພະຊິດ
ເປັນຜູ້ສິ້ນຕັນຫາແລະພົບ
ເຮົາຮຽກຜູ້ນັ້ນວ່າ ພາມ

[໔໑໗] ຜູ້ລະກິເລດເຄື່ອງປະກອບອັນເປັນຂອງມະນຸດໄດ້[໓]
ລ່ວງພົ້ນກິເລດເຄື່ອງປະກອບອັນເປັນທິບໄດ້ແລ້ວ
ເປັນຜູ້ປາສະຈາກໂຍຄະທັງປວງ
ເຮົາຮຽກຜູ້ນັ້ນວ່າ ພາມ

[໔໑໘] ຜູ້ລະທັງຄວາມຍິນດີ[໔] ແລະຄວາມບໍ່ຍິນດີ[໕]
ເປັນຜູ້ເຢືອກເຢັນ ໝົດອຸປະທິກິເລດ
ຄອບງຳໂລກທັງໝົດ ເປັນຜູ້ແກ່ກ້າ
ເຮົາຮຽກຜູ້ນັ້ນວ່າ ພາມ

[໖໔໗] ຜູ້ໃດຮູ້ການຈຸຕິແລະການອຸບັດ
ຂອງສັດທັງຫຼາຍໂດຍປະການທັງປວງ
ເຮົາຮຽກຜູ້ນັ້ນເຊິ່ງເປັນຜູ້ບໍ່ຕິດຂ້ອງ ໄປດີແລ້ວ
ແລະຕັດສະຮູ້ແລ້ວວ່າ ພາມ

[໖໕໐] ຜູ້ໃດມີຄະຕິທີ່ເທວະດາ ຄົນທັບ ແລະມະນຸດກໍຮູ້ບໍ່ໄດ້
ເຮົາຮຽກຜູ້ນັ້ນເຊິ່ງເປັນອະຣະຫັນຕະຂີນາສົບວ່າ ພາມ

[໖໕໑] ຜູ້ໃດບໍ່ມີກິເລດເຄື່ອງກັງວົນ
ທັງໃນອະດີດ ປັດຈຸບັນ ແລະອະນາຄົດ
ເຮົາຮຽກຜູ້ນັ້ນເຊິ່ງເປັນຜູ້ບໍ່ມີກິເລດເຄື່ອງກັງວົນ
ໝົດຄວາມຍຶດໝັ້ນຖືໝັ້ນວ່າ ພາມ

[໖໕໘] ຜູ້ອົງອາດ ຜູ້ປະເສີດ ຜູ້ແກ່ກ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຜູ້ຊະນະແລ້ວ
ຜູ້ບໍ່ຫວັ່ນໄຫວ ຜູ້ຊຳຣະແລ້ວ ແລະຜູ້ຕັດສະຮູ້ແລ້ວ
ເຮົາຮຽກວ່າ ພາມ

[໖໕໓] ຜູ້ໃດຣະນຶກອະດີດຊາດໄດ້ ເຫັນສະຫວັນແລະອະບາຍ
ບັນລຸພາວະທີ່ສິ້ນສຸດການເກີດ
ເຮົາຮຽກຜູ້ນັ້ນວ່າ ພາມ

[໖໕໔] ອັນແທ້ຈິງ ຊື່ແລະໂຄດທີ່ເຂົາກຳນົດໃຫ້ກັນນັ້ນ
ເປັນພຽງສົມມຸດບັນຍັດໃນໂລກ
ຊື່ແລະໂຄດຜາກົດຢູ່ໄດ້ຍ້ອນຮູ້ສືບກັນມາ
ຍາດສາໂລຫິດກຳນົດໄວ້ໃນການເກີດນັ້ນ ໆ

[໖໕໕] ຊື່ແລະໂຄດທີ່ກຳນົດຮຽກກັນນີ້
ເປັນຄວາມເຫັນທີ່ຝັງແໜ້ນຢູ່ໃນໃຈມາດົນຂອງຄົນຜູ້ບໍ່ຮູ້ຄວາມຈິງ
ເມື່ອບໍ່ຮູ້ຈຶ່ງກ່າວວ່າ ບຸກຄົນເປັນພາມຍ້ອນຊາດກຳເນີດ

[໖໕໖] ບຸກຄົນຈະຊື່ວ່າ ເປັນພາມຍ້ອນຊາດກຳເນີດກໍເປັນໄປບໍ່ໄດ້
ຈະຊື່ວ່າບໍ່ແມ່ນພາມຍ້ອນຊາດກຳເກີດກໍເປັນໄປບໍ່ໄດ້
ແຕ່ຊື່ວ່າເປັນພາມຍ້ອນກຳ

ຊື່ວ່າບໍ່ແມ່ນພາມຍ້ອນກຳ

[໖໕໗] ບຸກຄົນຊື່ວ່າເປັນຊາວນາຍ້ອນກຳ
ຊື່ວ່າເປັນຊ່າງສິລະປະ ເປັນພໍ່ຄ້າ ເປັນຄົນຮັບໃຊ້ ກໍຍ້ອນກຳ

[໖໕໘] ຊື່ວ່າເປັນໂຈນ ເປັນທະຫານອາຊີບ ເປັນປຸໂລຫິດ
ແມ່ນກະທັ່ງເປັນພຣະຣາຊາ ກໍຍ້ອນກຳທັ້ງຫຼາຍ

[໖໕໙] ບັນດິດຜູ້ມີປົກກະຕິເຫັນປະຕິດຈະສະມຸບບາດ
ສະຫຼາດໃນກຳແລະວິບາກ
ຍ່ອມເຫັນກຳຕາມຄວາມເປັນຈິງແນວນີ້

[໖໖໐] ສັດໂລກຍ່ອມເປັນໄປຕາມກຳ
ໝູ່ສັດເປັນໄປຕາມກຳ
ສັດທັງຫຼາຍມີກຳເປັນເຄື່ອງຜູກມັດ
ປຽບຄືລົດທີ່ແລ່ນໄປມີໝຸດເປັນເຄື່ອງຕຶງໄວ້ ສັນນັ້ນ

[໖໖໑] ບຸກຄົນຈະເປັນພາມ ກໍຍ້ອນກຳອັນປະເສີດນີ້
ຄື ຕະບະ ພົມມະຈັນ ສັນຍະມະ ທະມະ[១]
ກຳອັນປະເສີດນີ້ນຳຄວາມເປັນພາມທີ່ສູງສຸດມາໃຫ້

[໖໖໒] ບຸກຄົນສົມບູນດ້ວຍວິດຊາ ໓
ມີຄວາມສະງົບ ສິ້ນພົບໃໝ່ແລ້ວ
ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
ບຸກຄົນນັ້ນເປັນທັງພົມ ແລະທ້າວສັກກະຂອງບັນດິດຜູ້ຮູ້ແຈ້ງຢູ່

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ວາເສດຖະມານົບແລະພາຣະທະວາຊະມານົບໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມຈົ່ງຊົງຈຳພວກຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ວາເສດຖະສູດທີ ໙ ຈົບ**

# ໑໐. ໂກກາລິກະສູດ[១]

## ວ່າດ້ວຍພຣະໂກກາລິກະ

ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງອະນາຖະບິນ ທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ໂກກາລິກະພິກຂຸເຂົ້າໄປເຝົ້າພຣະຜູ້ມີພຣະພາກ ເຈົ້າເຖິງທີ່ ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະ ອົງ ຜູ້ຈະເລີນ ທ່ານພຣະສາຣີບຸດແລະທ່ານພຣະໂມກຄັນລານະເປັນຜູ້ມີຄວາມປາຖະໜາຊົ່ວ ລຸ ອຳນາດຄວາມປາຖະໜາຊົ່ວ

ເມື່ອໂກກາລິກະພິກຂຸຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບໂກກາລິກະ ພິກຂຸດັ່ງນີ້ວ່າ ໂກກາລິກະ ທ່ານຢ່າກ່າວແນວນັ້ນ ທ່ານຢ່າກ່າວແນວນັ້ນ ທ່ານຈົ່ງ ເຮັດຈິດໃຫ້ ເຫຼື້ອມໃສໃນສາຣີບຸດ ແລະໂມກຄັນລານະເທີ້ນ ສາຣີບຸດ ແລະໂມກຄັນລານະເປັນຜູ້ມີສິນ ເປັນ ທີ່ຮັກ

ແມ່ນເທື່ອທີ ໒ ໂກກາລິກະພິກຂຸກໍຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະ ອົງຜູ້ຈະເລີນ ແມ່ນພຣະຜູ້ມີພຣະພາກເຈົ້າຊົງເປັນບ່ອນຕັ້ງແຫ່ງສັດທາຂອງຂ້າພຣະອົງ ມີພຣະ ພຸດທະພົດ ທີ່ຂ້າພຣະອົງເຊື່ອຖືໄດ້ກໍຈິງ ແຕ່ທ່ານພຣະສາຣີບຸດແລະທ່ານພຣະໂມກຄັນລານະ ເປັນຜູ້ມີຄວາມປາຖະໜາຊົ່ວ ລຸອຳນາດຄວາມປາຖະໜາຊົ່ວ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບໂກກາລິກະພິກຂຸດັ່ງນີ້ວ່າ ໂກກາລິກະ ທ່ານຢ່າກ່າວ ແນວນັ້ນ ທ່ານຢ່າກ່າວແນວນັ້ນ ທ່ານຈົ່ງເຮັດຈິດໃຫ້ເຫຼື້ອມໃສໃນສາຣີບຸດແລະໂມກຄັນລານະ ເທີ້ນ ສາຣີບຸດແລະໂມກຄັນລານະເປັນຜູ້ມີສິນເປັນທີ່ຮັກ

ແມ່ນເທື່ອທີ ໓ ໂກກາລິກະພິກຂຸກໍຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະ ອົງ ຜູ້ຈະເລີນ ແມ່ນພຣະຜູ້ມີພຣະພາກເຈົ້າຊົງເປັນບ່ອນຕັ້ງແຫ່ງສັດທາຂອງຂ້າພຣະອົງ ມີພຣະ ພຸດທະພົດທີ່ຂ້າພຣະອົງເຊື່ອຖືໄດ້ກໍຈິງ ແຕ່ທ່ານພຣະສາຣີບຸດ ແລະທ່ານພຣະໂມກຄັນລານະ ເປັນຜູ້ມີຄວາມປາຖະໜາຊົ່ວ ລຸອຳນາດຄວາມປາຖະໜາຊົ່ວ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບໂກກາລິກະພິກຂຸດັ່ງນີ້ວ່າ ໂກກາລິກະ ທ່ານຢ່າກ່າວ ແນວນັ້ນ ທ່ານຢ່າກ່າວແນວນັ້ນ ທ່ານຈົ່ງເຮັດຈິດໃຫ້ເຫຼື້ອມໃສໃນສາຣີບຸດ ແລະໂມກຄັນລານະ ເທີ້ນ ສາຣີບຸດແລະໂມກຄັນລານະເປັນຜູ້ມີສິນເປັນທີ່ຮັກ

ຄັ້ງນັ້ນ ໂກກາລິກະພິກຂຸລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທໍາ ປະທັກຂິນແລ້ວຈາກໄປ

ເມື່ອໂກກາລິກະພິກຂຸຈາກໄປບໍ່ດົນ ຮ່າງກາຍກໍມີຕຸ່ມຂະໜາດທໍ່ໄນຜັກກາດເກີດຂຶ້ນທົ່ວຮ່າງ ຕຸ່ມເຫຼົ່ານັ້ນໃຫຍ່ທໍ່ໄນຜັກກາດ ແລ້ວກໍໃຫຍ່ທໍ່ເມັດຖົ່ວຂຽວ ໃຫຍ່ທໍ່ເມັດຖົ່ວດໍາ ໃຫຍ່ທໍ່ເມັດໝາກກະທັນ ໃຫຍ່ທໍ່ເມັດໝາກກະເບົາ ໃຫຍ່ທໍ່ຜົນໝາກຂາມປ້ອມ ໃຫຍ່ທໍ່ ໜ່ວຍໝາກຕູມອ່ອນທໍ່ໜ່ວຍໝາກຕູມແກ່ ແລ້ວກໍແຕກເປື່ອຍ ໜອງແລະເລືອດໄຫຼອອກມາ ໂກກາລິກະພິກຂຸຍ້ອນທົນພິດຕຸ່ມແຕກນັ້ນບໍ່ໄຫວຈຶ່ງມໍຣະນະພາບລົງໃນຂະນະນັ້ນ ແລະເມື່ອມໍຣະນະພາບລົງແລ້ວໄດ້ໄປເກີດໃນປະທຸມະນະຣົກ ຍ້ອນມີຈິດຜູກອາຄາດໃນທ່ານພຣະສາຣີບຸດແລະທ່ານພຣະໂມກຄັນລານະ

ຄັ້ງນັ້ນ ເມື່ອຣາຕີຜ່ານໄປ[໑] ທ້າວສະຫໍາບໍດີພົມມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງໄປທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນໂກກາລິກະພິກຂຸມໍຣະນະພາບແລ້ວໄປເກີດໃນປະທຸມະນະຣົກ ຍ້ອນມີຈິດຜູກອາຄາດໃນທ່ານພຣະສາຣີບຸດ ແລະທ່ານພຣະໂມກຄັນລານະ

ທ້າວສະຫໍາບໍດີພົມເມື່ອຂາບທູນແນວນີ້ແລ້ວ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທໍາປະທັກຂິນແລ້ວຫາຍໄປ ໃນບ່ອນນັ້ນແລ

ເມື່ອຄືນນັ້ນຜ່ານໄປ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ທ້າວສະຫໍາບໍດີພົມ ຯລຯ ພິກຂຸທັງຫຼາຍ ທ້າວສະຫໍາບໍດີພົມເມື່ອກ່າວແນວນີ້ແລ້ວ ກໍກະທໍາປະທັກຂິນແລ້ວຫາຍໄປໃນບ່ອນນັ້ນແລ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ປະມານອາຍຸໃນປະທຸມະນະຣົກດົນທໍ່ໃດນໍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ປະມານອາຍຸໃນປະທຸມະນະຣົກດົນຫຼາຍ ປະມານອາຍຸໃນປະທຸມະນະຣົກນັ້ນ ຍາກທີ່ຈະນັບໄດ້ວ່າ ປະມານທໍ່ນີ້ປີ ປະມານ ໑໐໐ ປີທໍ່ນີ້ ປະມານ ໑,໐໐໐ ປີທໍ່ນີ້ ປະມານ ໑໐໐,໐໐໐ ປີທໍ່ນີ້

ພິກຂຸນັ້ນທູນຖາມອີກວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງພໍຈະຍົກອຸປະມາໄດ້ບໍຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໄດ້ ພິກຂຸ ແລ້ວຕັດວ່າ ພິກຂຸ ໜຶ່ງກວຽນເມັດງາຂອງຊາວໂກສົນມີອັດຕາ ໒໐ ຂາຣີ[๑] ລ່ວງໄປແລ້ວ ໑໐໐,໐໐໐ ປີ ບຸຣຸດຈຶ່ງນຳເມັດງາອອກຈາກກວຽນນັ້ນ ໑ ເມັດ ເມັດງາໜຶ່ງກວຽນຂອງຊາວໂກສົນເຊິ່ງມີອັດຕາ ໒໐ ຂາຣີນັ້ນ ຈະເພິ່ງໝົດໄປໂດຍທຳນອງນີ້ໄວກວ່າ ແຕ່ວ່າ ໑ ອັບພຸທະນະຣົກ[๒]ບໍ່ໝົດໄປ ໒໐ ອັບພຸທະນະຣົກ ເປັນ ໑ ນິຣັບພຸທະນະຣົກ ໒໐ ນິຣັບພຸທະນະຣົກ ເປັນ ໑ ອະພະພະນະຣົກ ໒໐ ອະພະພະນະຣົກ ເປັນ ໑ ອະຫະຫະນະຣົກ ໒໐ ອະຫະຫະນະຣົກ ເປັນ ໑ ອະຕະຕະນະຣົກ ໒໐ ອະຕະຕະນະຣົກ ເປັນ ໑ ກຸມຸທະນະຣົກ ໒໐ ກຸມຸທະນະຣົກ ເປັນ ໑ ໂສຄັນທິກະນະຣົກ ໒໐ ໂສຄັນທິກະນະຣົກ ເປັນ ໑ ອຸບປະລະກະນະຣົກ ໒໐ ອຸບປະລະກະນະຣົກ ເປັນ ໑ ປຸນທະຣີກະນະຣົກ ໒໐ ປຸນທະຣີກະນະຣົກ ເປັນ ໑ ປະທຸມະນະຣົກ

ພິກຂຸ ໂກກາລິກະພິກຂຸນີ້ເກີດໃນປະທຸມະນະຣົກ ຍ້ອນມີຈິດຜູກອາຄາດໃນສາຣີບຸດແລະໂມກຄັນລານະ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[໖໖໓] ຜະຣຸສະວາຈາ (ຄຳຫຍາບ) ເປັນຄືຜຶ້ງ[๓]
ເຄື່ອງຕັດຕົນຂອງຄົນພານຜູ້ກ່າວຄຳຊົ່ວ
ຍ່ອມເກີດທີ່ປາກຂອງຄົນພານ

[໖໖໔] ຜູ້ໃດສັນເສີນຄົນທີ່ຄວນຕິຕຽນ
ຫຼືຕິຕຽນຄົນທີ່ຄວນສັນເສີນ
ຜູ້ນັ້ນຊື່ວ່າສັ່ງສົມຄວາມຜິດໄວ້ດ້ວຍປາກ
ຍ່ອມບໍ່ປະສົບຄວາມສຸກ ຍ້ອນຄວາມຜິດນັ້ນ

[໖໖໕] ການປຣາໄຊດ້ວຍຊັບ
ໃນການຫຼິ້ນການພະນັນຈົນໝົດໂຕນີ້
ເປັນຄວາມຜິດພຽງເລັກໜ້ອຍ
ແຕ່ການທີ່ບຸກຄົນມີໃຈປະທຸດສະຮ້າຍ
ໃນບຸກຄົນຜູ້ດຳເນີນໄປດີແລ້ວນີ້ທໍ່ນັ້ນ
ເປັນຄວາມຜິດຫຼາຍກວ່າ

[໖໖໖] ບຸກຄົນຜູ້ຕັ້ງວາຈາແລະໃຈອັນຊົ່ວ
ຕິຕຽນພຣະອະຣິຍະຍ່ອມເຂົ້າເຖິງນະຣົກ
ສິ້ນ ໑໓໖,໐໐໐ ນິຣັບພຸທະກັບ
ກັບອີກ ໕ ອັບພຸທະກັບ

[໖໖໗] ຄົນທີ່ມັກກ່າວຄຳບໍ່ຈິງ
ຫຼືຄົນທີ່ເຮັດຄວາມຊົ່ວແລ້ວກ່າວວ່າ
ເຮົາບໍ່ໄດ້ເຮັດ ຕ່າງກໍຕົກນະຮົກ໌
ຄົນ ໔ ຈຳພວກນັ້ນ ຕ່າງກໍມີກຳຊົ່ວ
ຕາຍໄປແລ້ວມີຄະຕິເທົ່າທຽມກັນໃນໂລກໜ້າ

[໖໖໘] ບຸກຄົນໃດປະທຸດສະຮ້າຍຕໍ່ຄົນຜູ້ບໍ່ປະທຸດສະຮ້າຍ
ເປັນຜູ້ບໍລິສຸດ ບໍ່ມີກິເລດພຽງດັ່ງເນີນ
ບາບຍ່ອມກັບມາເຖິງບຸກຄົນນັ້ນເຊິ່ງເປັນຄົນພານຢ່າງແນ່ແທ້
ຄືຝຸ່ນທຸລີອັນລະອຽດທີ່ບຸກຄົນຊັດໄປທວນລົມ ສັນນັ້ນ໌

[໖໖໙] ຜູ້ໝົກມຸ້ນໃນຄວາມໂລບຕ່າງ ໆ ບໍ່ມີສັດທາ
ມີນິໄສຫຍາບກະດ້າງ ບໍ່ຮູ້ພູດທະພົດ
ມີຄວາມຂີ້ຖີ່ ມັກເວົ້າສັບສົ່ນ
ຍ່ອມໃຊ້ວາຈາກ່າວຮ້າຍຜູ້ອື່ນ

[໖໗໐] ໂກກາລິກະຜູ້ມີປາກເປັນຫຼົ່ມ ມັກເວົ້າຕົວະ
ບໍ່ແມ່ນຄົນດີ ມັກກຳຈັດຄວາມຈະເລີນຂອງຕົນ
ເປັນຄົນຊົ່ວ ມັກເຮັດແຕ່ກຳຊົ່ວ
ເປັນຄົນຕ່ຳຊ້າ ເປັນຄົນອາພັບ ເປັນອະວະຊາຕະບຸດ
ທ່ານຢ່າເວົ້າຫຼາຍໃນບ່ອນນີ້ ຢ່າຕ້ອງເປັນສັດນະຮົກເລີຍ

[໖໗໑] ທ່ານຍ່ອມເຂ່ຍທຸລີຄືກິເລດລົງໃສ່ຕົນ
ບໍ່ເປັນປະໂຫຍດເກື້ອກູນແກ່ຕົນເອງເລີຍ
ທ່ານມັກເຮັດກຳຫຍາບຊ້າແລ້ວ ຍັງຕິຕຽນສັດຕະບຸຣຸດ
ທ່ານປະພຶດທຸດຈະຣິດຫຼວງຫຼາຍ
ຕ້ອງໄປເກີດໃນມະຫານະຮົກເປັນເວລາຍາວນານແນ່ນອນ

[໖໗໔] ກຳ໌ຂອງໃຜ ໆ ຍ່ອມບໍ່ສູນຫາຍໄປໄສ
ເຂົາຕ້ອງໄດ້ຮັບຜົນກຳນັ້ນ ແລະເປັນເຈົ້າຂອງກຳນັ້ນ
ຄົນໂງ່ຈ້າຜູ້ມັກເຮັດກຳຊົ່ວຫຍາບ
ຈະປະສົບທຸກທີ່ຕົນໄດ້ຮັບໃນປະຣະໂລກ

[໖໗໕] ຜູ້ເຮັດກຳຊົ່ວຍ່ອມເຂົ້າເຖິງສະຖານທີ່ທີ່ນາຍນິຣະຍະບານ

ເອົາຂໍເຫຼັກອັນຄົມກົບມາກ່ຽວໄວ້
ຖືກຫຼາວເຫຼັກອັນຄົມກົບສຽບໄວ້
ແລະມີກ້ອນເຫຼັກແດງສະຫວ່າງສະໄຫວເປັນອາຫານ
ຕາມສົມຄວນແກ່ຄວາມຊົ່ວ ຕາມສົມຄວນແກ່ກຳຊົ່ວທີ່ຕົນເຮັດໄວ້

[ຜກ໔] ນາຍນິຣະຍະບານທັງຫຼາຍເມື່ອເວົ້າກັບສັດນະຣົກ ກໍເວົ້າບໍ່ມ່ວນ
ສັດນະຣົກເຫຼົ່ານັ້ນຈະແລ່ນໜີໄປກໍບໍ່ໄດ້
ຈະເຂົ້າໄປຂໍຄວາມຊ່ວຍເຫຼືອກໍບໍ່ໄດ້
ຈຶ່ງນອນຢູ່ເທິງຖ່ານໄຟອັນລາດໄວ້
ເຂົ້າໄປສູ່ກອງໄຟອັນລຸກຮຸ່ງ

[ຜກ໕] ນາຍນິຣະຍະບານເອົາຕາໜ່າງເຫຼັກພັນສັດນະຣົກ
ແລ້ວທຸບດ້ວຍຄ້ອນເຫຼັກໃນບ່ອນນັ້ນ ໆ
ສັດນະຣົກທັງຫຼາຍເຂົ້າໄປສູ່ນະຣົກໝອກຄວັນທີ່ມືດທຶບ
ເຊິ່ງປົກຄຸມອົບອວນໄປທົ່ວຄືກຸ່ມໝອກ

[ຜກ໖] ຕໍ່ຈາກນັ້ນ ສັດນະຣົກເຫຼົ່ານັ້ນ
ກໍເຂົ້າໄປສູ່ໂລຫະກຸມພີນະຣົກທີ່ມີນ້ຳໄຟລຸກສະຫວ່າງແຈ້ງ
ລອຍວົນຂຶ້ນລົງພ້ອມກັບຖືກໄຟໄໝ້ຢູ່
ໃນໝໍ້ເຫຼັກທີ່ໄຟໄໝ້ລຸກນັ້ນເປັນເວລານານແສນນານ

[ຜກ໗] ສັດນະຣົກຜູ້ເຮັດກຳຊົ່ວຫຍາບໄວ້ປະຈຳ
ຈະຫຼີກໜີໄປທາງທິດໃດ ໆ
ກໍຖືກໄຟນຳເຜົາໄໝ້ຢູ່
ໃນໝໍ້ເຫຼັກຮ້ອນແດງທີ່ປົນດ້ວຍໜອງແລະເລືອດ
ໄດ້ຮັບທຸກຣະກຳລຳບາກ
ຊ້ຳຍັງເປິເປື້ອນໜອງແລະເລືອດຢູ່ໃນໂລຫະກຸມພີນະຣົກນັ້ນ

[ຜກ໘] ສັດນະຣົກຜູ້ເຮັດກຳຊົ່ວຫຍາບໄວ້ປະຈຳ
ຍ່ອມມີກາໄໝ້ຢູ່ໃນນ້ຳທີ່ມີໝູ່ໜອນໄຕ່ຕອມໃນໂລຫະກຸມພີ
ນະຣົກແຕ່ລະຂຸມນັ້ນ ໆ ບໍ່ມີຝັ່ງທີ່ຈະໃຫ້ຂຶ້ນອາໄສເລີຍ
ຍ້ອນມີກະທະກວມຢູ່ຢ່າງມິດຊິດຮອບທຸກທິດ

[ຜກ໙] ຍັງມີປ່າໄມ້ທີ່ມີໃບຄົມ ຄືດາບຂຶ້ນຢູ່ທົ່ວໄປ

ເຊິ່ງພວກສັດນະຮົກເຂົ້າໄປກໍຈະຖືກຕັດລຳໂຕຂາດທັນທີ
ນາຍນິຣະຍະບານກໍຈະເອົາເບັດເກາະລີ້ນ
ທໍລະມານດ້ວຍການດຶງອອກມາເລື້ອຍ ໆ

[៥៧០] ຕໍ່ຈາກນັ້ນ ສັດນະຮົກນັ້ນຕ້ອງຕົກນະຮົກນໍ້າກົດເຊິ່ງເປັນແອ່ງ
ຖືກຄົມມີດແຖຄົມກີບຂີດຕາມໂຕ
ສັດທີ່ໂງ່ຈ້າມັກເຮັດບາບໄວ້ຫຼາຍ
ຈຶ່ງຕ້ອງຕົກລົງໄປເທິງຄົມມີດແຖນັ້ນ

[៥៧១] ຍ້ອນໄດ້ເຄີຍກໍ່ກຳທຳເຂັນໄວ້
ສັດນະຮົກຈຶ່ງຖືກໝາດຳດ່າງ
ແລະໝາຈອກຫຸ້ມຍາດກັດກິນ ຮ້ອງຮ່ຳໄຮຢູ່ໃນບ່ອນນັ້ນ ໆ
ຊ້ຳຍັງຖືກຝູງແຮ້ງ ກາ ແລະນົກຕະກຸມຫຸ້ມຍາດສັບກິນອີກ

[៥៧២] ຄົນຜູ້ມັກເຮັດກຳຊົ່ວຫຍາບເປັນປະຈຳ ຕ້ອງຮູ້ແກ່ໃຈວ່າ
ການດຳລົງຢູ່ໃນນະຮົກນີ້ທຸກຍາກລຳບາກຈິງ ໆ
ຍ້ອນແນວນັ້ນ ນໍຣະຊົນ ຈຶ່ງຄວນຟ້າວເຮັດກິດທີ່ຄວນເຮັດ
ແຕ່ຕອນທີ່ຍັງມີຊີວິດຢູ່ນີ້
ແລະບໍ່ຄວນຜະໝາດ

[៥៧៣] ກວຽນບັນທຸກງາທີ່ຜູ້ຮູ້ທັງຫຼາຍນັບຄຳນວນ
ແລ້ວນຳເຂົ້າໄປປຽບກັບອາຍຸສັດທີ່ເກີດໃນປະທຸມະນະຮົກ
ກໍໄດ້ທໍ່ກັບ ៥១,២០០ ໂກດ

[៥៧៤] ສັດນະຮົກທັງຫຼາຍ ຕ້ອງຢູ່ໃນນະຮົກເຊິ່ງມີທຸກຫຼວງຫຼາຍ
ຕາມທີ່ເຮົາກ່າວໄວ້ໃນບ່ອນນີ້ ຕະຫຼອດລະຍະເວລາຍາວນານ
ຍ້ອນແນວນັ້ນ ບຸກຄົນຄວນກຳນົດຮັກສາວາຈາໃຈໃຫ້ເປັນປົກກະຕິ
ໃນທ່ານຜູ້ບໍລິສຸດ ມີສິນເປັນທີ່ຮັກ ແລະມີຄຸນງາມຄວາມດີ

**ໂກກາລິກະສູດທີ 10 ຈົບ**

# ໑໑. ນາລະກະສູດ

## ວ່າດ້ວຍນາລະກະດາບົດທູນຖາມບັນຫາ

[໖໗໕] ອະສິຕະລືສີຢູ່ໃນບ່ອນພັກກາງເວັນ ໄດ້ເຫັນທ້າວສັກກະຈອມເທບ
ແລະທວຍເທບຊັ້ນຕາວະຕິງສາມີໃຈຊື່ນຊົມໂສມະນັດ
ຍົກຜ້າທິບຂຶ້ນຊົມເຊີຍຢູ່ບໍ່ໄດ້ຂາດ
ຢູ່ບ່ອນສະຖິດອັນສະອາດ

[໖໗໖] ເມື່ອເຫັນແລ້ວຈຶ່ງທຳຄວາມນອບນ້ອມ
ພ້ອມຖາມເທວະດາທັງຫຼາຍຜູ້ມີໃຈເບີກບານໃນບ່ອນນັ້ນວ່າ
ຍ້ອນເຫດໃດ ທວຍເທບຈຶ່ງດີໃຈຢ່າງລົ້ນເຫຼືອ
ຍ້ອນອາໄສອັນໃດ ທ່ານທັງຫຼາຍຈຶ່ງຍົກຜ້າທິບຂຶ້ນແລ້ວມ່ວນຊື່ນຢູ່ແນວນີ້

[໖໗໗] ແມ່ນເວລາທີ່ເກີດສົງຄາມກັບພວກອະສູນ ທວຍເທບໄດ້ໄຊຊະນະ
ເຫຼົ່າອະສູນປຣາໄຊ ອາການດີໃຈຂົນລຸກຂົນຊັນແນວນີ້ກໍບໍ່ໄດ້ມີ
ເທວະດາທັງຫຼາຍໄດ້ເຫັນເຫດອັນໃດທີ່ບໍ່ເຄີຍມີມາກ່ອນ
ຈຶ່ງພາກັນເບີກບານສຸກສະບາຍໃຈຫຼວງຫຼາຍແນວນີ້

[໖໗໘] ທວຍເທບອອກສຽງຊົມເຊີຍຂັບຮ້ອງບັນເລງດົນຕີ
ຕົບມືຟ້ອນລຳກັນຢູ່
ຂ້າພະເຈົ້າຂໍຖາມທ່ານທັງຫຼາຍຜູ້ຢູ່ເທິງຈອມພູພຣະສຸເມນວ່າ
ທ່ານຜູ້ປາສະຈາກທຸກທັງຫຼາຍ
ຂໍພວກທ່ານຈົ່ງຊ່ອຍກັນກຳຈັດຄວາມສົງໄສຂອງຂ້າພະເຈົ້າ
ໃຫ້ສິ້ນໄປໂດຍໄວເທີ້ນ

(ເທວະດາທັງຫຼາຍກ່າວຕອບດັ່ງນີ້)

[໖໗໙] ພຣະໂພທິສັດຜູ້ເປັນຣັດຕະນະອັນປະເສີດ ບໍ່ມີຜູ້ປຽບທຽບ
ໄດ້ບັງເກີດແລ້ວໃນມະນຸດສາໂລກ ທີ່ປ່າລຸມພິນີວັນ
ໃນຄາມຊົນນະບົດຂອງເຈົ້າສາກະຍະທັງຫຼາຍ
ເພື່ອປະໂຫຍດເກື້ອກູນແລະຄວາມສຸກ
ຍ້ອນເຫດນັ້ນ ເຮົາທັງຫຼາຍຈຶ່ງພາກັນຍິນດີເບີກບານໃຈຢ່າງລົ້ນເຫຼືອ

[໓໙໐] ພຣະໂພທິສັດນັ້ນ ເປັນບຸກຄົນຜູ້ເລີດເປັນຜູ້ສູງສຸດໃນສັບພະສັດ
ເປັນນໍຣະຊົນຜູ້ອົງອາດ ປະເສີດສູງສຸດໃນໝູ່ສັດທັງປວງ
ຈະຊົງປະກາດທຳມະຈັກທີ່ປ່າອິສິປະຕະນະ
ປຽບຄືພະຍາຣາດຊະສີ ມີກຳລັງ
ມີອຳນາດເໜືອໝູ່ເນື້ອບັນລືສີຫະນາດຢູ່

[໓໙໑] ອະສິຕະລືສີນັ້ນຟັງສຽງຂອງເທວະດານັ້ນແລ້ວ
ຈຶ່ງຟ້າວເຂົ້າໄປສູ່ທີ່ປະທັບຂອງພຣະເຈົ້າສຸດໂທທະນະ ໃນເວລານັ້ນທັນທີ
ເມື່ອນັ່ງແລ້ວໄດ້ທູນຖາມເຈົ້າສາກະຍະທັງຫຼາຍໃນບ່ອນນັ້ນວ່າ
ພຣະກຸມານປະທັບຢູ່ບ່ອນໃດ ອາຕະມາພາບປະສົງຈະເຝົ້າ

[໓໙໒] ລຳດັບນັ້ນ ເຈົ້າສາກະຍະທັງຫຼາຍ
ໄດ້ຊົງນຳພຣະກຸມານ ຜູ້ຊົງຜຸດຜ່ອງດັ່ງຄຳ
ທີ່ປາກເບົ້າເຊິ່ງຊ່າງຄຳຜູ້ຊ່ຽວຊານຫຼອມດີແລ້ວ
ຊົງຮຸ່ງເຮືອງຍິ່ງດ້ວຍພຣະສິຣິ ມີພຣະສະຫວີວັນຜຸດຜ່ອງ
ເປັນພຣະໂອຣົດຜູ້ປະເສີດ
ອອກມາໃຫ້ອະສິຕະລືສີເຝົ້າຊົມພຣະປາຣະມີ

[໓໙໓] ອະສິຕະລືສີໄດ້ເຫັນພຣະກຸມານຜູ້ຊົງຮຸ່ງເຮືອງດັ່ງແປວໄຟ
ຄືດວງຈັນເພັງລອຍເດັ່ນໃນນະພາກາດ
ມີແສງພາວກວ່າໝູ່ດາວ
ຄືດວງອາທິດພົ້ນຈາກກ້ອນເຟືອແຜດແສງຢູ່ໃນສາຣະທະການ
ຈຶ່ງເກີດຄວາມຍິນດີ ໄດ້ຮັບປີຕິໄພບູນ

[໓໙໔] ທວຍເທບກັ້ນສະເຫວດຕະສັດ ມີດິ້ວຫຼວງຫຼາຍ
ປະກອບດ້ວຍຊັ້ນ ໑,໐໐໐ ຊັ້ນ ໄວ້ໃນນະພາກາດ
ຈາມອນດ້າມຄຳທັງຫຼາຍ ໂບກໄປມາຢູ່
ແຕ່ຜູ້ຖືຈາມອນແລະສະເຫວດຕະສັດບໍ່ຜາກົດ

[໓໙໕] ລືສີເກົ້າຊະດາ ນາມວ່າກັນຫະສິຣິ
ໄດ້ເຫັນພຣະກຸມານງາມຄືແທ່ງຄຳເທິງຜ້າກຳພົນແດງ
ແລະສະເຫວດຕະສັດທີ່ກັ້ນຢູ່ເທິງພຣະສຽນ
ກໍມີຈິດເບີກບານ ດີໃຈພ້ອມຊ້ອນອຸ້ມພຣະກຸມານໄວ້ແນບກາຍ

[໘໕໘] ພໍອຸ້ມພຣະກຸມານຜູ້ປະເສີດໄວ້ແລ້ວ
ອະສິຕະລືສີຜູ້ຮຽນຈົບລັກສະນະມົນ
ກໍກວດພິຈາລະນາລັກສະນະ
ມີຈິດເຫຼື້ອມໃສ ໄດ້ເປ່ງອາຈາວ່າ
ພຣະກຸມານນີ້ບໍ່ມີຜູ້ອື່ນຍິ່ງມກວ່າ
ເປັນຜູ້ສູງສຸດໃນບັນດາສັດ ໒ ຕີນ

[໘໕໙] ແລ້ວ ອະສິຕະລືສີຫວນຣະນຶກເຖິງການທີ່ຕົນຕ້ອງໄປເກີດ
ກໍຣະທົມໃຈຈົນນ້ຳຕາໄຫຼ
ເຊິ່ງເຈົ້າສາກະຍະທັງຫຼາຍໄດ້ທອດພຣະເນດເຫັນລືສີຮ້ອງໄຫ້ເຊັ່ນນັ້ນ
ຈຶ່ງຕັດຖາມວ່າ ພຣະກຸມານຈະມີອັນຕະລາຍຫຼືແນວໃດ

[໘໕໙] ອະສິຕະລືສີໄດ້ທູນເຈົ້າສາກະຍະທັງຫຼາຍ
ຜູ້ທອດພຣະເນດເຫັນແລ້ວ ບໍ່ຊົງສະບາຍພຣະທະໄທວ່າ
ບໍ່ແມ່ນອາຕະມາພາບຣະນຶກເຖິງສິ່ງທີ່ເປັນອັບປະມົງຄົນໃນພຣະກຸມານ
ແລະກໍບໍ່ແມ່ນພຣະກຸມານນັ້ນຈະຊົງມີອັນຕະລາຍ
ພຣະກຸມານນີ້ບໍ່ເປັນຜູ້ຕ່ຳຕ້ອຍເລີຍ
ຂໍມະຫາບໍພິດທັງຫຼາຍຈົ່ງສະບາຍພຣະທະໄທເທີ້ນ

[໘໕໗] ພຣະກຸມານນີ້ຈະຊົງບັນລຸພຣະສັບພັນຍຸຕະຍານ
ຈະຊົງເຫັນນິບພານທີ່ບໍລິສຸດຢ່າງຍິ່ງ
ຈະຊົງພ່ຳເພັງປະໂຫຍດເກື້ອກູນແກ່ມະຫາຊົນ
ຈັກປະກາດທຳມະຈັກ
ພົມມະຈັນ°ຂອງພຣະກຸມານນີ້
ຈະເຜີຍແຜ່ຊ່າລືໄປຢ່າງກວ້າງຂວາງ

[໗໐໐] ແຕ່ອາຍຸຂອງອາຕະມາພາບເຫຼືອຢູ່ໃນໂລກນີ້ບໍ່ດົນ
ອາຕະມາພາບຈະຕ້ອງມໍຣະນະພາບໄປໃນລະຫວ່າງນີ້
ອາຕະມາພາບນັ້ນຈະບໍ່ໄດ້ສະດັບທຳຂອງພຣະກຸມານ
ຜູ້ຊົງມີຄວາມພຽນຫາຜູ້ສະເໝີເໝືອນບໍ່ໄດ້
ຍ້ອນເຫດນັ້ນ ອາຕະມາພາບຈຶ່ງຮ້ອນຮົນເຖິງຄວາມພິນາດ ທຸກໃຈ

[໗໐໑] ອະສິຕະລືສີນັ້ນທູນໃຫ້ເຈົ້າສາກະຍະທັງຫຼາຍ
ເກີດຄວາມປີຕິເປັນລົ້ນພົ້ນແລ້ວ

ຈຶ່ງອອກຈາກພະຣາດຊະວັງໄປພ່ຳເພັງພົມມະຈັນຕໍ່ໄປ
ພ້ອມກັບອະນຸເຄາະຫຼານຂອງຕົນເອງ
ເຝິກໃຫ້ເຂົາສະມາທານໃນທຳຂອງພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງມີຄວາມພຽນຫາຜູ້ສະເໝີເໝືອນບໍ່ໄດ້

[໗໐໔] ກ່າວສອນວ່າ ຕໍ່ໄປພາຍໜ້າ
ເຈົ້າໄດ້ຍິນສຽງຊ່າລືໄປວ່າ ພຣະພຸດທະເຈົ້າ
ພຣະສິດທັດຖະຣາດຊະກຸມານນີ້ຊົງບັນລຸພຣະສັບພັນຍຸຕະຍານແລ້ວ
ກຳລັງຊົງເຜີຍແຜ່ທາງດຳເນີນສູ່ອະມະຕະທຳ
ເຈົ້າຈົ່ງໄປທູນສອບຖາມດ້ວຍຕົນເອງໃນສຳນັກຂອງພຣະອົງ
ຈົ່ງປະພຶດພົມມະຈັນໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເທີ້ນ

[໗໐໕] ນາລະກະດາບົດສັ່ງສົມບຸນໄວ້ຫຼາຍ
ໄດ້ຮັບຄຳພ່ຳສອນຈາກອະສິຕະລືສີ
ຜູ້ມີໃຈເກື້ອກູນ ມີຈິດໝັ້ນຄົງ
ເຊິ່ງເປັນຜູ້ເຫັນນິບພານອັນບໍລິສຸດຢ່າງຍິ່ງໃນອະນາຄົດ
ຈຶ່ງເຝົ້າຮັກສາໂສຕິນຊີ ລໍຖ້າພຣະຊິນນະສີຢູ່

[໗໐໔] ນາລະກະດາບົດໄດ້ຟັງສຽງຊ່າລືເຖິງການທີ່ພຣະຊິນນະສີ
ຊົງປະກາດທຳມະຈັກອັນປະເສີດ
ຈຶ່ງໄປເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຜູ້ປະເສີດ ອົງອາດກວ່າລືສີ
ແລ້ວເຫຼື້ອມໃສ ໄດ້ທູນຖາມປະຕິປະທາທີ່ປະເສີດສຸດກັບພຣະມຸນີຜູ້ປະເສີດ
ໃນເມື່ອເວລາຄຳສັ່ງສອນຂອງອະສິຕະລືສີມາເຖິງແລ້ວ

**ວັດຖຸຄາຖາ ຈົບ**

(ນາລະກະດາບົດທູນຖາມດັ່ງນີ້)

[໗໐໕] ຂ້າແດ່ພຣະໂຄດົມ ຄຳຂອງອະສິຕະລືສີນັ້ນ
ຂ້າພຣະອົງໄດ້ຮູ້ວ່າ ເປັນຈິງຕາມທີ່ກ່າວແລ້ວ
ຍ້ອນເຫດນັ້ນ ຂ້າພຣະອົງຂໍທູນຖາມພຣະອົງ
ຜູ້ເຖິງຝັ່ງແຫ່ງທຳທັງປວງ

[໗໐໖] ພຣະອົງຜູ້ອັນຂ້າພຣະອົງທູນຖາມແລ້ວ

ຂໍຈົ່ງຕັດບອກມຸນີແລະປະຕິປະທາອັນສູງສຸດຂອງມຸນີແຫ່ງບັນພະຊິດ
ຜູ້ສະແຫວງຫາການທ່ຽວໄປເພື່ອພິກສາ ແກ່ຂ້າພຣະອົງເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໗໐໗] ເຮົາຈັກພະຍາກອນປະຕິປະທາຂອງມຸນີທີ່ປະຕິບັດໄດ້ຍາກ
ທັງໃຫ້ເກີດຄວາມຍິນດີໄດ້ຍາກແກ່ທ່ານ
ຖ້າຈັ່ງຊັ້ນ ເຮົາຈະບອກປະຕິປະທາຂອງມຸນີນັ້ນແກ່ທ່ານ
ທ່ານຈົ່ງຊ່ວຍເຫຼືອຕົນເອງ ຈົ່ງເປັນຜູ້ໝັ້ນຄົງເທີ້ນ

[໗໐໘] ມຸນີເພິ່ງເຮັດທັງຄຳດ່າແລະການຂາບໄຫວ້
ໃນໝູ່ບ້ານໃຫ້ມີສ່ວນສະເໝີກັນ
ຄືເພິ່ງຮັກສາຈິດບໍ່ໃຫ້ຄິດຮ້າຍ ເປັນຜູ້ສະງົບ
ບໍ່ຟຸ້ງຊ່ານທ່ຽວໄປ

[໗໐໙] ອາລົມສູງຕ່ຳ ປຽບຄືແປວໄຟໃນປ່າຍ່ອມຜາກົດ
ນາຣີມັກປະເລົ້າປະໂລມະມຸນີ
ທ່ານຈົ່ງລະວັງຢ່າໃຫ້ນາງປະເລົ້າປະໂລມໄດ້

[໗໑໐] ມຸນີເພິ່ງງົດເວັ້ນຈາກເມຖຸນທຳ
ລະການມະຄຸນທັງທີ່ປະນີດແລະບໍ່ປະນີດ
ບໍ່ຍິນດີຍິນຮ້າຍໃນສັດຜູ້ຍັງຕື່ນຕົກໃຈແລະທີ່ໝັ້ນຄົງ

[໗໑໑] ມຸນີເພິ່ງເຮັດຕົນໃຫ້ເປັນອຸປະມາວ່າ ເຮົາສັນໃດ
ສັດເຫຼົ່ານີ້ກໍສັນນັ້ນ
ສັດເຫຼົ່ານີ້ສັນໃດ ເຮົາກໍສັນນັ້ນ ດັ່ງນີ້ແລ້ວ
ບໍ່ຂ້າເອງ ບໍ່ໃຊ້ໃຫ້ຜູ້ອື່ນຂ້າ

[໗໑໒] ມຸນີລະຄວາມປາຖະໜາແລະຄວາມໂລບໃນປັດໄຈ ໔
ທີ່ປຸຖຸຊົນພາກັນຫຼົງຢຶດຕິດໄດ້ແລ້ວ ເປັນຜູ້ມີຈັກຂຸ
ປະຕິບັດປະຕິປະທາຂອງມຸນີ
ກໍຈະຂ້າມພົ້ນຄວາມທະຍານຢາກໃນປັດໄຈເຊິ່ງເປັນຄືເຫວເລິກນີ້ໄດ້

[໗໑໓] ມຸນີຄວນເປັນຜູ້ມີທ້ອງບົກ ສັນອາຫານແຕ່ພໍປະມານ
ມີຄວາມປາຖະໜາໜ້ອຍ ປາສະຈາກຄວາມລະໂມບ

ໝົດຄວາມກະຫາຍຫິວດ້ວຍຄວາມຢາກ ບໍ່ມີຄວາມຢາກອີກຕໍ່ໄປ
ດັບຄວາມຮ້ອນຮົນໄດ້ຕະຫຼອດການ

[ກ໗໔] ມຸນີນັ້ນທ່ຽວຮັບບິນທະບາດແລ້ວ ຄວນເຂົ້າໄປສູ່ປ່າທັນທີ
ຢືນຫຼືນັ່ງທີ່ເຫງົ້າຕົ້ນໄມ້ຕາມປ່ານັ້ນ

[ກ໗໕] ມຸນີນັ້ນຄວນຈະຂວນຂວາຍໃນຊານ ຊົງປັນຍາ
ຍິນດີຢູ່ສະເພາະຕາມໃນປ່າ
ຄວນເພ່ງພິນິດ ເຮັດຕົນໃຫ້ຍິນດີຍິ່ງ ຢູ່ເຫງົ້າຕົ້ນໄມ້ນັ້ນ

[ກ໗໖] ຈາກນັ້ນ ເມື່ອຣາຕີສະຫວ່າງແລ້ວ
ມຸນີຄວນເຂົ້າໄປສູ່ບໍລິເວນໝູ່ບ້ານ
ບໍ່ຄວນຍິນດີຮັບນິມົນສັນທີ່ເຮືອນ
ແລະອາຫານທີ່ເຂົານຳມາຈາກເຮືອນຖວາຍເຈາະຈົງ

[ກ໗໗] ມຸນີເຂົ້າໄປເຖິງໝູ່ບ້ານແລ້ວ
ບໍ່ຄວນຟ້າວຮ້ອນເຂົ້າໄປເຮືອນຕະກູນອຸປັດຖາກ
ເປັນຜູ້ຕັດການໂອ້ລົມ ບໍ່ຄວນກ່າວວາຈາກ່ຽວກັບການສະແຫວງຫາຂອງກິນ

[ກ໗໘] ມຸນີນັ້ນຄິດວ່າ ສິ່ງທີ່ເຮົາໄດ້ແລ້ວລ້ວນແຕ່ເປັນປະໂຫຍດທັງນັ້ນ
ເຖິງບໍ່ໄດ້ກໍດີ ດັ່ງນີ້ແລ້ວ
ເປັນຜູ້ໝັ້ນຄົງ ຍ້ອນການໄດ້ແລະບໍ່ໄດ້ທັງ ໘ ຢ່າງນັ້ນ
ກັບເຂົ້າໄປສູ່ບ່ອນຢູ່ຂອງຕົນ
ຄືຄືນຫາໝາກໄມ້ເຂົ້າໄປສູ່ຕົ້ນໄມ້ ສັນນັ້ນ

[ກ໗໙] ມຸນີນັ້ນອຸ້ມບາດທ່ຽວໄປ
ບໍ່ເປັນກືກກໍສົມມຸດຕົນວ່າເປັນກືກ
ບໍ່ຄວນດູໝິ່ນທານວ່າໜ້ອຍ
ບໍ່ຄວນດູແຄນທາຍົກຜູ້ໃຫ້

[ກ໘໐] ປະຕິປະທາ[໑]ທີ່ພຣະສະມະນະປະກາດແລ້ວ ມີທັງສູງແລະຕ່ຳ[໒]
ມຸນີຜູ້ປະຕິບັດຈະໄປເຖິງຝັ່ງເຖິງ ໘ ຄັ້ງເປັນໄປບໍ່ໄດ້[໓]
ຝັ່ງນີ້ ຜູ້ປະຕິບັດຮູ້ໄດ້ເທື່ອດຽວ ກໍເປັນໄປບໍ່ໄດ້[໔]

[ກ໘໑] ອັນໜຶ່ງ ມຸນີເປັນພິກຂຸເຊິ່ງຕັດກະແສຂາດແລ້ວ

ບໍ່ມີຕັນຫາຊ່ານໄປ ລະກິດນ້ອຍໃຫຍ່ໄດ້ແລ້ວ
ຍ່ອມບໍ່ມີຄວາມຮ້ອນຮົນ[໒]

[໗໘໘] ເຮົາຈະພະຍາກອນປະຕິປະທາຂອງມຸນີໃຫ້ທ່ານຮູ້ຕໍ່ໄປຄື
ພິກຂຸຜູ້ປະຕິບັດຄວນເປັນຜູ້ມີຄົມມີດແຖເປັນເຄື່ອງປຽບ
ກົດເພດານໄວ້ດ້ວຍລີ້ນ ສັງລວມທ້ອງ

[໗໘໙] ຄວນເປັນຜູ້ມີຈິດບໍ່ທໍ້ແທ້ ແລະບໍ່ຄວນຄຸ່ນຄິດກັງວົນຫຼາຍ
ເປັນຜູ້ໝົດກິ່ນສາບ[໓] ບໍ່ມີຕັນຫາແລະທິດຖິອາໄສ
ມີພົມມະຈັນເປັນຈຸດໝາຍ

[໗໙໐] ເພິ່ງເຝິກຝົນເພື່ອການນັ່ງສະງົບຜູ້ດຽວ
ແລະເພື່ອພໍ່າເພັງຈິດພາວະນາຂອງສະມະນະ
ຄວາມເປັນມຸນີທີ່ເຮົາບອກໄວ້ແລ້ວໂດຍສ່ວນດຽວ
ຫາກທ່ານຈັກຍິນດີຢູ່ຜູ້ດຽວ
ທ່ານກໍຈັກຜາກົດກຽດຕິຄຸນໄປທົ່ວ ໑໐ ທິດ

[໗໙໑] ທ່ານໄດ້ຟັງສຽງສັນເສີນຂອງນັກປາດທັງຫຼາຍ
ຜູ້ເພ່ງພິນິດຢູ່ ຕັດຂາດຈາກກາມແລ້ວ
ຕໍ່ຈາກນັ້ນ ຄວນເຮັດຫິຣິແລະສັດທາໃຫ້ຍິ່ງຂຶ້ນ
ຈຶ່ງນັບວ່າເປັນສາວົກຂອງເຮົາໄດ້

[໗໙໒] ທ່ານຈະເຂົ້າໃຈຄໍາທີ່ເຮົາກ່າວແລ້ວນັ້ນໄດ້ແຈ່ມແຈ້ງ
ດ້ວຍການປຽບທຽບແມ່ນໍ້າກັບລໍາຄອງ ແລະໜອງບຶງ ຄື
ແມ່ນໍ້ານ້ອຍໄຫຼດັ່ງສະໜັ່ນ
ແມ່ນໍ້າສາຍໃຫຍ່ ໆ ໄຫຼງຽບສະງົບ

[໗໙໓] ສິ່ງໃດຂາດ ສິ່ງນັ້ນດັງ
ສິ່ງໃດເຕັມ ສິ່ງນັ້ນງຽບ
ຄົນພານປຽບໄດ້ກັບໝໍ້ນໍ້າທີ່ມີນໍ້າພຽງເຄິ່ງດຽວ
ບັນດິດປຽບໄດ້ກັບແມ່ນໍ້າທີ່ເຕັມປ່ຽມ

[໗໙໔] ພຣະສະມະນະພຸດທະເຈົ້າຊົງຮູ້ຈັກຄໍາເວົ້າທີ່ຈະຕັດໃຫ້ຫຼາຍວ່າ
ມີສາຣະປະກອບດ້ວຍປະໂຫຍດ ຈຶ່ງຊົງສະແດງທໍາ

ພຣະອົງຊົງຮູ້ຢູ່ຈຶ່ງຕັດໄດ້ຫຼາຍ

[໗໘໗] ອັນໜຶ່ງ ສະມະນະໃດຮູ້ແຈ້ງທຳ
ສັງລວມຈິດຂອງຕົນໄດ້ ບໍ່ກ່າວຫຼາຍທັງທີ່ຮູ້
ສະມະນະນັ້ນຊື່ວ່າເປັນມຸນີ
ຍ່ອມຄວນແກ່ປະຕິປະທາຂອງມຸນີ
ສະມະນະນັ້ນເປັນມຸນີໄດ້ບັນລຸປະຕິປະທາຂອງມຸນີໆແລ້ວ

**ນາລະກະສູດທີ ໑໑ ຈົບ**

# ໑໘. ທະວະຍະຕານຸປັດສະນາສູດ

## ວ່າດ້ວຍການພິຈາລະນາເຫັນທຳເປັນຄູ່

ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ບຸບພາຣາມ ຜາສາດຂອງນາງວິສາຂາມິຄາຣະມາຕາ ເຂດນະຄອນສາວັດຖີ ສະໄໝນັ້ນເປັນຄືນມື້ເພັງ ເປັນມື້ອຸໂປສົດຂຶ້ນ ໑໕ ຄ່ຳ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງກາງແຈ້ງ ມີພິກຂຸສົງຮ້ອມລ້ອມ ທອດພຣະເນດເຫັນພິກຂຸສົງສະງົບງຽບຈຶ່ງຕັດວ່າ ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ການຟັງກຸສົນທຳທີ່ເປັນຂອງພຣະອະຣິຍະ ເປັນເຄື່ອງນຳອອກຈາກໂລກ ເປັນເຫດໃຫ້ດຳເນີນໄປສູ່ຄວາມຕັດສະຮູ້ ຈະມີປະໂຫຍດອັນໃດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຄວນຕອບເຂົາແບບນີ້ວ່າ ມີປະໂຫຍດໃຫ້ຮູ້ຈັກທຳແຍກອອກເປັນ ໘ ຄູ່ຕາມຄວາມເປັນຈິງ

ທ່ານທັງຫຼາຍຄວນຕອບເຂົາເຖິງທຳແຍກອອກເປັນ ໘ ຄູ່ ຄື

(໑) ການພິຈາລະນາເຫັນເນືອງ ໆ ວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ນີ້ເປັນຄູ່ທີ ໘ ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກອອກເປັນ ໘ ຄູ່ໂດຍຖືກຕ້ອງເນືອງ ໆ ແບບນີ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພິ່ງຫວັງຜົນຢ່າງ ໑ ໃນ ໘ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼືຄວາມເປັນພຣະອະນາຄາມີ ເມື່ອຍັງມີອຸປາທານຂັນເຫຼືອຢູ່

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

[ກ໖໐] ສະມະນະຫຼືພາມເຫຼົ່າໃດບໍ່ຮູ້ຈັກທຸກ
ເຫດເກີດທຸກ ທຳມະຊາດເປັນທີ່ດັບທຸກລົງໄດ້ໝົດສິ້ນ
ແລະບໍ່ຮູ້ຈັກທາງປະຕິບັດໃຫ້ເຖິງຄວາມດັບທຸກ

[ກ໖໑] ສະມະນະຫຼືພາມເຫຼົ່ານັ້ນ
ເປັນຜູ້ເສື່ອມຈາກເຈໂຕວິມຸດຕິແລະປັນຍາວິມຸດຕິ
ເປັນຜູ້ບໍ່ຄວນເພື່ອຈະເຮັດບ່ອນສຸດແຫ່ງທຸກໄດ້
ເປັນຜູ້ເຂົ້າເຖິງຊາດແລະຊະຣາແທ້

[ກ໖໘] ສ່ວນສະມະນະຫຼືພາມເຫຼົ່າໃດຮູ້ຈັກທຸກ
ເຫດເກີດທຸກ ທຳມະຊາດເປັນທີ່ດັບທຸກລົງໄດ້ໝົດສິ້ນ
ແລະຮູ້ຈັກທາງປະຕິບັດໃຫ້ເຖິງຄວາມດັບທຸກ

[ກ໖໖] ສະມະນະຫຼືພາມເຫຼົ່ານັ້ນ
ເປັນຜູ້ເຖິງພ້ອມດ້ວຍເຈໂຕວິມຸດຕິແລະປັນຍາວິມຸດຕິ
ເປັນຜູ້ຄວນເພື່ອຈະເຮັດບ່ອນສຸດແຫ່ງທຸກໄດ້
ແລະເປັນຜູ້ບໍ່ເຂົ້າເຖິງຊາດແລະຊະຣາ[១]

(໘) ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ການພິຈາລະນາເຫັນທຳແຍກອອກເປັນ ໘ ຄູ່ ໂດຍຖືກຕ້ອງເນືອງ ໆ ດ້ວຍວິທີອື່ນຍັງມີອີກແດ່ບໍ ຄວນຕອບເຂົາວ່າ ມີ ຫາກເຂົາຖາມຕໍ່ໄປອີກວ່າ ມີແນວໃດ ຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ທຸກແນວໃດແນວໜຶ່ງເກີດຂຶ້ນ ທຸກນັ້ນທັງໝົດຍ່ອມເກີດຍ້ອນອຸປະທິ[១]ເປັນປັດໄຈ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ຍ້ອນອຸປະທິທັງຫຼາຍນັ້ນເອງດັບລົງໂດຍການຄາຍກິເລດໄດ້ໝົດທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ນີ້ເປັນຄູ່ທີ ໘

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກອອກເປັນ ໘ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ๆລๆ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[ກ໖໔] ທຸກຫຼາຍຮູບແບບອັນໃດກໍຕາມໃນໂລກ
ລ້ວນເກີດມາຈາກອຸປະທິເປັນຕົ້ນເຫດ
ຜູ້ໃດແລ ບໍ່ມີປັນຍາ ກໍ່ອຸປະທິ
ຜູ້ນັ້ນຈັດວ່າເປັນຄົນຈ້ຳ ຍ່ອມເຂົ້າເຖິງທຸກຢູ່ເລື້ອຍ ໆ
ຍ້ອນແນວນັ້ນ ບຸກຄົນຮູ້ຢູ່ເປັນຜູ້ມີປົກກະຕິພິຈາລະນາເຫັນທຸກວ່າ
ມີຊາດເປັນແດນເກີດ ບໍ່ຄວນກໍ່ອຸປະທິ

(໓) ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ການພິຈາລະນາເຫັນທຳແຍກອອກເປັນ ໔ ຄູ່ ໂດຍຖືກຕ້ອງເນືອງ ໆ ດ້ວຍວິທີອື່ນຍັງມີອີກແດ່ບໍ ຄວນຕອບເຂົາວ່າ ມີ ຫາກເຂົາຖາມຕໍ່ໄປອີກວ່າ ມີແນວໃດ ຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ທຸກແນວໃດແນວໜຶ່ງເກີດຂຶ້ນ ທຸກນັ້ນທັງໝົດຍ່ອມເກີດຍ້ອນອະວິດຊາເປັນປັດໄຈ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ຍ້ອນອະວິດຊານັ້ນເອງດັບລົງໂດຍການຄາຍກິເລດໄດ້ໝົດທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ນີ້ເປັນຄູ່ທີ ໔

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກອອກເປັນ ໔ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[໗໓໕] ອະວິດຊານັ້ນແລເປັນຄະຕິຂອງສັດທັງຫຼາຍ
ຜູ້ເຂົ້າເຖິງຊາດ ມໍລະນະ ແລະສັງສາຣະວັດ
ເຊິ່ງມີສະພາວະແນວນີ້ແລະສະພາວະແນວອື່ນ^ຢູ່ ຢູ່ປະຈຳ ໆ

[໗໓໖] ອະວິດຊາຄືຄວາມຫຼົງມົວເມົາຢ່າງໃຫຍ່ຫຼວງນີ້
ເປັນເຫດໃຫ້ສັດທັງຫຼາຍຈົມປັກຢູ່ສິ້ນການລະນານ
ສັດເຫຼົ່າໃດທຳລາຍອະວິດຊາດ້ວຍວິດຊາແລ້ວ
ສັດເຫຼົ່ານັ້ນຍ່ອມບໍ່ເຂົ້າເຖິງພົບໃໝ່ອີກ

(໔) ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ການພິຈາລະນາເຫັນທຳແຍກອອກເປັນ ໔ ຄູ່ ໂດຍຖືກຕ້ອງເນືອງ ໆ ດ້ວຍວິທີອື່ນຍັງມີອີກແດ່ບໍ ຄວນຕອບເຂົາວ່າ ມີ ຫາກເຂົາຖາມຕໍ່ໄປອີກວ່າ ມີແນວໃດ ຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ທຸກແນວໃດແນວໜຶ່ງເກີດຂຶ້ນ ທຸກນັ້ນທັງໝົດຍ່ອມເກີດຍ້ອນສັງຂານ^ເປັນປັດໄຈ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ຍ້ອນສັງຂານທັງຫຼາຍນັ້ນເອງດັບລົງໂດຍການຄາຍກິເລດໄດ້ໝົດທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ນີ້ເປັນຄູ່ທີ ໔

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກອອກເປັນ ໔ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[໗໓໗] ທຸກແນວໃດແນວໜຶ່ງເກີດຂຶ້ນ
ທຸກນັ້ນທັງໝົດເກີດຍ້ອນສັງຂານເປັນປັດໄຈ
ຍ້ອນສັງຂານທັງຫຼາຍດັບລົງ
ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ

[໗໖໙] ພິກຂຸຮູ້ໂທດນີ້ວ່າ ທຸກເກີດຂຶ້ນຍ້ອນສັງຂານເປັນປັດໄຈ
ຍ້ອນຄວາມສະງົບສັງຂານທັງປວງ ສັນຍາທັງຫຼາຍຈຶ່ງດັບລົງ
ຄວາມສິ້ນທຸກຍ່ອມມີໄດ້ດ້ວຍອາການແບບນີ້
ຍ້ອນຮູ້ຄວາມສິ້ນທຸກນີ້ໂດຍຖ່ອງແທ້ແລ້ວ

[໗໖໘] ບັນດິດທັງຫຼາຍຜູ້ເຫັນຖືກ ເປັນຜູ້ຈົບເວດ ຮູ້ໂດຍຖືກຕ້ອງແລ້ວ
ຄອບງຳກິເລດເຄື່ອງປະກອບຂອງມານໄດ້ແລ້ວ ຍ່ອມບໍ່ເກີດອີກ

(໕) ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ຯລຯ ຄວນຕອບເຂົາວ່າ ມີແບບນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ທຸກແບບໃດແບບໜຶ່ງເກີດຂຶ້ນ ທຸກນັ້ນທັງໝົດ ຍ່ອມເກີດຍ້ອນວິນຍານເປັນປັດໄຈ໑ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ຍ້ອນວິນຍານນັ້ນເອງດັບລົງໂດຍການຄາຍກິເລດໄດ້ໝົດ ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ນີ້ເປັນຄູ່ທີ ໒

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກອອກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ແບບນີ້ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[໗໕໐] ທຸກແບບໃດແບບໜຶ່ງເກີດຂຶ້ນ
ທຸກນັ້ນທັງໝົດຍ່ອມເກີດຍ້ອນວິນຍານເປັນປັດໄຈ
ຍ້ອນວິນຍານດັບລົງ
ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ

[໗໕໑] ພິກຂຸຮູ້ໂທດນີ້ວ່າ ທຸກເກີດຂຶ້ນຍ້ອນວິນຍານເປັນປັດໄຈ
ເປັນຜູ້ປາສະຈາກຕັນຫາ ດັບກິເລດໄດ້ໝົດສິ້ນແລ້ວ
ຍ້ອນວິນຍານລະງັບລົງ

(໖) ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ຯລຯ ຄວນຕອບເຂົາວ່າ ມີແບບນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ທຸກແບບໃດແບບໜຶ່ງເກີດຂຶ້ນ ທຸກນັ້ນທັງໝົດຍ່ອມເກີດ ຍ້ອນຜັດສະເປັນປັດໄຈ໒ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ຍ້ອນຜັດສະ ນັ້ນເອງດັບລົງໂດຍການຄາຍກິເລດໄດ້ ໝົດ ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ນີ້ເປັນຄູ່ທີ ໒

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກອອກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ແບບນີ້ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[໗໕໒] ຊົນທັງຫຼາຍຜູ້ຖືກຜັດສະຄອບງຳແລ້ວ
ແລ່ນໄປຕາມກະແສ (ຕັນຫາ) ໃນພົບ

ດຳເນີນໄປຜິດທາງ ຍ່ອມຫ່າງໄກຈາກຄວາມສິ້ນສັງໂຍດ

[໗໘໓] ສ່ວນຊົນທັງຫຼາຍຜູ້ກຳນົດຮູ້ຜັດສະຈົນທົ່ວເຖິງແລ້ວ
ຍິນດີໃນທຳເປັນທີ່ສະງົບລະງັບໄດ້ດ້ວຍປັນຍາ
ຍ່ອມເປັນຜູ້ປາສະຈາກຕັນຫາ ດັບກິເລດລົງໄດ້ໝົດສິ້ນ
ຍ້ອນຮູ້ຍິ່ງເຖິງຜັດສະ

(໗) ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ຯລຯ ຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ທຸກແນວໃດແນວໜຶ່ງເກີດຂຶ້ນ ທຸກນັ້ນທັງໝົດຍ່ອມເກີດຍ້ອນເວທະນາເປັນປັດໄຈ[១] ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ຍ້ອນເວທະນານັ້ນເອງດັບລົງໂດຍການຄາຍກິເລດໄດ້ໝົດ ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ນີ້ເປັນຄູ່ທີ ໒

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[໗໘໔] ເວທະນາແນວໃດແນວໜຶ່ງ ຄື
ສຸຂະເວທະນາ ທຸກຂະເວທະນາ ຫຼືອະທຸກຂະມະສຸຂະເວທະນາ
ມີຢູ່ທັງພາຍໃນແລະພາຍນອກ

[໗໘໕] ພິກຂຸຮູ້ວ່າ ເວທະນານີ້ເປັນເຫດແຫ່ງທຸກ
ຖືກຕ້ອງສຳຜັດເວທະນາທີ່ມີຄວາມເສື່ອມສູນໄປເປັນທຳມະດາ
ມີປົກກະຕິຊຸດໂຊມໄປ ດ້ວຍອຸທະຍັບພະຍະຍານແລ້ວ
ເຫັນຄວາມເສື່ອມເປັນບ່ອນສຸດ
ຊື່ວ່າຮູ້ແຈ້ງເຫັນຈິງໃນເວທະນານັ້ນແນວນີ້
ຍ້ອນເວທະນາທັງຫຼາຍສິ້ນໄປນັ້ນເອງ
ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ

(໘) ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ຯລຯ ຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ທຸກແນວໃດແນວໜຶ່ງເກີດຂຶ້ນ ທຸກນັ້ນທັງໝົດຍ່ອມເກີດ ຍ້ອນຕັນຫາເປັນປັດໄຈ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ຍ້ອນຕັນຫານັ້ນເອງດັບລົງໂດຍການຄາຍກິເລດໄດ້ໝົດ ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ນີ້ເປັນຄູ່ທີ ໒

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[໗໔໖]　ບຸກຄົນມີຕັນຫາເປັນເພື່ອນ ທ່ອງທ່ຽວໄປຕະຫຼອດການຍາວນານ
ຍ່ອມບໍ່ລ່ວງພົ້ນສັງສາຣະວັດ ທີ່ມີສະພາວະແນວນີ້ແລະສະພາວະແນວອື່ນ

[໗໔໗]　ພິກຂຸຮູ້ໂທດນີ້ ຮູ້ຕັນຫາເປັນເຫດໃຫ້ເກີດທຸກ
ເພິ່ງເປັນຜູ້ບໍ່ມີຕັນຫາ ບໍ່ມີຄວາມຖືໝັ້ນ ມີສະຕິສຳປະຊັນຍະຢູ່໑

(໙) ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ຯລຯ ຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ທຸກແນວໃດແນວໜຶ່ງເກີດຂຶ້ນ ທຸກນັ້ນທັງໝົດຍ່ອມເກີດຍ້ອນອຸປາທານເປັນປັດໄຈ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ຍ້ອນອຸປາທານນັ້ນເອງດັບລົງໂດຍການຄາຍກິເລດໄດ້ໝົດ ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ນີ້ເປັນຄູ່ທີ ໒

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

[໗໔໘]　ພົບມີໄດ້ຍ້ອນອຸປາທານເປັນປັດໄຈ
ສັດເກີດມາແລ້ວຕ້ອງປະສົບທຸກ ຕ້ອງຕາຍ
ນີ້ເປັນເຫດເກີດແຫ່ງທຸກ

[໗໔໙]　ຍ້ອນແນວນັ້ນ ບັນດິດທັງຫຼາຍຮູ້ດ້ວຍປັນຍາໂດຍຖືກຕ້ອງ
ຮູ້ແຈ້ງພາວະທີ່ສິ້ນສຸດການເກີດ
ຍ້ອນອຸປາທານສິ້ນໄປ ຈຶ່ງບໍ່ເຂົ້າເຖິງພົບໃໝ່ອີກ

(໑໐) ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ຯລຯ ຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ທຸກແນວໃດແນວໜຶ່ງເກີດຂຶ້ນ ທຸກນັ້ນທັງໝົດຍ່ອມເກີດຍ້ອນອາຣຳພະ[๑]ເປັນປັດໄຈ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ຍ້ອນອາຣຳພະນັ້ນເອງດັບລົງໂດຍການຄາຍກິເລດໄດ້ໝົດ ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ນີ້ເປັນຄູ່ທີ ໒

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[໗໕໐]　ທຸກແນວໃດແນວໜຶ່ງເກີດຂຶ້ນ
ທຸກນັ້ນທັງໝົດຍ່ອມເກີດຍ້ອນອາຣຳພະເປັນປັດໄຈ
ຍ້ອນອາຣຳພະທັງຫຼາຍດັບລົງ
ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ

[ກ໕໑]	ພິກຂຸຮູ້ໂທດນີ້ວ່າ ທຸກເກີດຂຶ້ນຍ້ອນອາຣໍາພະເປັນປັດໄຈ
ສະລະຄືນອາຣໍາພະໄດ້ທັງໝົດ
ນ້ອມຈິດໄປໃນນິບພານທີ່ປາສະຈາກອາຣໍາພະ

[ກ໕໒]	ພິກຂຸຜູ້ຖອນພະວະຕັນຫາໄດ້ແລ້ວ ມີຈິດສະງົບ
ມີຊາດແລະສົງສານໝົດແລ້ວ ຍ່ອມບໍ່ມີພົບໃໝ່

(໑໑)	ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ໆລໆ ຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ທຸກແນວໃດແນວໜຶ່ງເກີດຂຶ້ນ ທຸກນັ້ນທັງໝົດ ຍ່ອມເກີດຍ້ອນອາຫານເປັນປັດໄຈ[9] ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ຍ້ອນອາຫານນັ້ນເອງດັບລົງໂດຍການຄາຍກິເລດໄດ້ໝົດ ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ນີ້ເປັນຄູ່ທີ ໒

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທໍາແຍກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ໆລໆ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[ກ໕໓]	ທຸກແນວໃດແນວໜຶ່ງເກີດຂຶ້ນ
ທຸກນັ້ນທັງໝົດຍ່ອມເກີດຍ້ອນອາຫານເປັນປັດໄຈ
ຍ້ອນອາຫານທັງຫຼາຍດັບລົງ
ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ

[ກ໕໔]	ພິກຂຸຮູ້ໂທດນີ້ວ່າ ທຸກເກີດຂຶ້ນຍ້ອນອາຫານເປັນປັດໄຈ
ກໍານົດຮູ້ອາຫານທຸກຢ່າງ
ຈຶ່ງເປັນຜູ້ບໍ່ມີຕັນຫາໃນອາຫານທັງໝົດ

[ກ໕໕]	ພິກຂຸຮູ້ຄວາມບໍ່ມີພະຍາດ[6]ໂດຍຖືກຕ້ອງ
ພິຈາລະນາແລ້ວຈຶ່ງໃຊ້ສອຍປັດໄຈ ໔
ດໍາລົງຢູ່ໃນທໍາ ຈົບເວດ
ຍ່ອມບໍ່ເຂົ້າເຖິງການນັບ[9]ອີກຕໍ່ໄປ
ຍ້ອນອາສະວະທັງຫຼາຍສິ້ນໄປ

(໑໒)	ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ໆລໆ ຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ທຸກແນວໃດແນວໜຶ່ງເກີດຂຶ້ນ ທຸກນັ້ນທັງໝົດຍ່ອມເກີດຍ້ອນອິນຊິຕະ[6] (ຄວາມຫວັ່ນໄຫວ) ເປັນປັດໄຈ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ຍ້ອນອິນຊິຕະນັ້ນເອງດັບລົງໂດຍການຄາຍກິເລດໄດ້ໝົດ ທຸກຈຶ່ງເກີດຂຶ້ນບໍ່ໄດ້ ອີກຕໍ່ໄປ ນີ້ເປັນຄູ່ທີ ໒

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ຯລຯຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[ກ໕໖] ທຸກແນວໃດແນວໜຶ່ງເກີດຂຶ້ນ
ທຸກນັ້ນທັງໝົດຍ່ອມເກີດຍ້ອນອິນຊິຕະເປັນປັດໄຈ
ຍ້ອນດັບອິນຊິຕະ
ທຸກຈຶ່ງເກີດຂຶ້ນບໍ່ໄດ້ອີກຕໍ່ໄປ

[ກ໕໗] ພິກຂຸຮູ້ໂທດນີ້ວ່າ ທຸກເກີດຂຶ້ນຍ້ອນອິນຊິຕະເປັນປັດໄຈ
ຍ້ອນແນວນັ້ນ ຈຶ່ງຄວນສະລະຕັນຫາ ດັບສັງຂານໄດ້
ບໍ່ມີອິນຊິຕະ ບໍ່ມີຄວາມຖືໝັ້ນ ມີສະຕິ ສຳປະຊັນຍະຢູ່

(໑໓) ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ຯລຯ ຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ຜັນທິຕະ (ຄວາມດີ້ນຮົນ) ຍ່ອມມີແກ່ຜູ້ຕົກຢູ່ໃຕ້ອຳນາດ ຕັນຫາ ທິດຖິ ແລະມານະ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ຜູ້ທີ່ພົ້ນຈາກອຳນາດຕັນຫາ ທິດຖິ ແລະມານະຍ່ອມບໍ່ດີ້ນຮົນ ນີ້ເປັນຄູ່ທີ ໒

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ຯລຯຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[ກ໕໘] ຜູ້ພົ້ນຈາກອຳນາດຕັນຫາ ທິດຖິ ແລະມານະ ຍ່ອມບໍ່ດີ້ນຮົນ
ສ່ວນຜູ້ທີ່ຕົກຢູ່ໃນອຳນາດຕັນຫາເປັນຕົ້ນ ຖືໝັ້ນຢູ່
ຍ່ອມບໍ່ລ່ວງພົ້ນສັງສາຣະວັດທີ່ມີສະພາວະແນວນີ້ແລະສະພາວະແນວອື່ນໄປໄດ້

[ກ໕໙] ພິກຂຸຮູ້ໂທດນີ້ວ່າ ຕັນຫາເປັນໄພໃຫຍ່
ພົ້ນຈາກຕັນຫາເປັນຕົ້ນນັ້ນໄດ້ແລ້ວ
ບໍ່ມີຄວາມຖືໝັ້ນ ມີສະຕິ ສຳປະຊັນຍະຢູ່

(໑໔) ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ຯລຯ ຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ອະຮູບພົບລະອຽດກວ່າຮູບພົບ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ນິໂຣທລະອຽດກວ່າອະຮູບພົບ ນີ້ເປັນຄູ່ທີ ໒

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ຯລຯຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[ກ໖໐] ສັດທັງຫຼາຍທັງທີ່ເຂົ້າເຖິງຮູບພົບແລະທີ່ດຳລົງຢູ່ໃນອະຮູບພົບ
ເມື່ອຍັງບໍ່ຮູ້ແຈ້ງເຖິງຄວາມດັບກິເລດ
ກໍຍັງຕ້ອງກັບມາເກີດໃໝ່ອີກ

[ກ໖໑] ສ່ວນຜູ້ທີ່ກຳນົດຮູ້ຮູບພົບແລ້ວ ບໍ່ດຳລົງຢູ່ໃນອະຮູບພົບ
ນ້ອມຈິດໄປໃນນິບພານ ຍ່ອມຊະນະມັດຈຸຣາດໄດ້

(໑໕) ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ຯລຯ ຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ນາມຮູບທີ່ຊາວໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດພາກັນພິຈາລະນາເຫັນວ່າ ນາມຮູບ ນີ້ເປັນຂອງຈິງ ເຊິ່ງພຣະອະຣິຍະທັງຫຼາຍພິຈາລະນາເຫັນຕາມຄວາມເປັນຈິງດ້ວຍປັນຍາ ອັນຖືກຕ້ອງວ່າ ນາມຮູບນີ້ບໍ່ເປັນຂອງຈິງ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນເນືອງ ໆ ວ່າ ນິບພານທີ່ຊາວໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງ ສະມະນະພາມ ເທວະດາແລະມະນຸດພາກັນພິຈາລະນາເຫັນວ່າ ນິບພານນີ້ບໍ່ມີຢູ່ຈິງ ເຊິ່ງພຣະອະຣິຍະທັງຫຼາຍພິຈາລະນາເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງວ່າ ນິບພານ ນີ້ມີຢູ່ຈິງ ນີ້ເປັນຄູ່ທີ ໒

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ຯລຯ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[ກ໖໒] ທ່ານມີຄວາມເຂົ້າໃຈຜິດໃນນາມຮູບທີ່ບໍ່ແມ່ນອັດຕາວ່າເປັນອັດຕາ
ຈົ່ງເບິ່ງຊາວໂລກພ້ອມທັງເທວະໂລກ
ເຊິ່ງພາກັນຍຶດໝັ້ນໃນນາມຮູບ ໂດຍເຂົ້າໃຈວ່າ
ນາມຮູບນີ້ເປັນຂອງຈິງ

[ກ໖໓] ຄວາມຈິງ ນາມຮູບນັ້ນຍ່ອມຜັນແປເປັນແນວອື່ນ
ຈາກອາການທີ່ຄົນທົ່ວໄປເຂົ້າໃຈຢູ່ສະເໝີ
ນາມຮູບຂອງຜູ້ເຂົ້າໃຈເຊັ່ນນັ້ນ ບໍ່ເປັນຈິງຕາມນັ້ນແຕ່ຢ່າງໃດ
ຍ້ອນນາມຮູບນັ້ນຜາກົດບໍ່ດົນກໍເສື່ອມສູນໄປເປັນທຳມະດາ

[ກ໖໔] ນິບພານມີຄວາມບໍ່ເສື່ອມສູນໄປເປັນທຳມະດາ
ເຊິ່ງພຣະອະຣິຍະທັງຫຼາຍຮູ້ແຈ້ງຕາມຄວາມເປັນຈິງ
ຈຶ່ງເປັນຜູ້ປາສະຈາກຕັນຫາ ປະຣິນິບພານແລ້ວ
ຍ້ອນຮູ້ແຈ້ງອະຣິຍະສັດ

(໑໖)  ພິກຂຸທັງຫຼາຍ ຫາກມີຜູ້ຖາມວ່າ ການພິຈາລະນາເຫັນທຳແຍກອອກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ດ້ວຍວິທີອື່ນມີແດ່ບໍ ຄວນຕອບເຂົາວ່າ ມີ ຫາກເຂົາຖາມຕໍ່ໄປອີກວ່າ ມີແນວໃດ ກໍຄວນຕອບເຂົາວ່າ ມີແນວນີ້ ຄື ການພິຈາລະນາເຫັນເນືອງ ໆ ວ່າ ອິດຖາຣົມທີ່ຊາວໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງ ສະມະນະພາມ ເທວະດາແລະມະນຸດພາກັນພິຈາລະນາເຫັນວ່າ ອິດຖາຣົມນີ້ເປັນຄວາມສຸກ ເຊິ່ງພຣະອະຣິຍະທັງຫຼາຍພິຈາລະນາເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງວ່າ ອິດຖາຣົມ ນີ້ເປັນຄວາມທຸກ ນີ້ເປັນຄູ່ທີ ໑ ການພິຈາລະນາເຫັນວ່າ ນິບພານທີ່ຊາວໂລກພ້ອມທັງ ເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດພາກັນພິຈາລະນາເຫັນວ່າ ນິບພານນີ້ເປັນຄວາມທຸກ ເຊິ່ງພຣະອະຣິຍະທັງຫຼາຍພິຈາລະນາເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງວ່າ ນິບພານນີ້ເປັນຄວາມສຸກ ນີ້ເປັນ ຄູ່ທີ ໒

ພິກຂຸທັງຫຼາຍ ພິກຂຸຜູ້ພິຈາລະນາເຫັນທຳແຍກອອກເປັນ ໒ ຄູ່ໂດຍຖືກຕ້ອງເນືອງ ໆ ແນວນີ້ ບໍ່ປະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼືຄວາມເປັນພຣະອະນາຄາມີ ເມື່ອຍັງມີອຸປາທານຂັນເຫຼືອຢູ່

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

[໗໖໕] ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ແລະທຳມາຣົມ
ລ້ວນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ
ທີ່ກ່າວກັນວ່າມີຢູ່ປະມານທໍ່ໃດ

[໗໖໖]  ຮູບເປັນຕົ້ນເຫຼົ່ານັ້ນແລເປັນສິ່ງທີ່ຊາວໂລກ
ພ້ອມທັງເທວະໂລກສົມມຸດວ່າ ເປັນສຸກ
ຖ້າຮູບເປັນຕົ້ນເຫຼົ່ານັ້ນດັບໃນບ່ອນໃດ
ບ່ອນນັ້ນ ເທວະດາແລະມະນຸດເຫຼົ່ານັ້ນກໍສົມມຸດກັນວ່າ ເປັນທຸກ

[໗໖໗]  ສ່ວນອະຣິຍະບຸກຄົນທັງຫຼາຍເຫັນການດັບຈັກກາຍວ່າ ເປັນສຸກ
ການເຫັນຂອງອະຣິຍະບຸກຄົນທັງຫຼາຍຜູ້ເຫັນຢູ່ນີ້
ຍ່ອມຂັດແຍ່ງກັບຊາວໂລກທັງປວງ

[໗໖໘]  ບຸກຄົນເຫຼົ່າອື່ນກ່າວສິ່ງໃດວ່າ ເປັນສຸກ
ອະຣິຍະບຸກຄົນທັງຫຼາຍກ່າວສິ່ງນັ້ນວ່າ ເປັນທຸກ
ບຸກຄົນເຫຼົ່າອື່ນກ່າວສິ່ງໃດວ່າ ເປັນທຸກ

ອະຣິຍະບຸກຄົນທັງຫຼາຍຮູ້ແຈ້ງສິ່ງນັ້ນວ່າ ເປັນສຸກ

[໗໖໙] ທ່ານຈົ່ງເຫັນທຳທີ່ຮູ້ໄດ້ຍາກ
ຄົນພານຜູ້ຫຼົງ ບໍ່ຮູ້ແຈ້ງໃນນິບພານນີ້
ຄວາມມືດຜາກົດແກ່ບຸກຄົນຜູ້ຖືກນິວອນຄືກິເລດຫຸ້ມຫໍ່ໄວ້
(ຄື) ຄວາມມືດຜາກົດແກ່ບຸກຄົນຜູ້ບໍ່ເຫັນ ສັນນັ້ນ

[໗໗໐] ແຕ່ນິບພານຍ່ອມຜາກົດແຈ່ມແຈ້ງແກ່ສັດຕະບຸຣຸດ
ຄືແສງສະຫວ່າງຜາກົດແກ່ບຸກຄົນຜູ້ເຫັນຢູ່ ສັນນັ້ນ
ຊົນທັງຫຼາຍຜູ້ສະແຫວງຫາທາງ ບໍ່ສະຫຼາດໃນທຳ
ຍ່ອມບໍ່ຮູ້ແຈ້ງ (ນິບພານ)ທີ່ຢູ່ໃກ້

[໗໗໑] ບຸກຄົນຜູ້ຖືກຄວາມກຳໜັດໃນພົບຄອບງຳ
ແລ່ນໄປຕາມກະແສ (ຕັນຫາ)ໃນພົບ
ຖືກບ້ວງມານຄ້ອງໄວ້ ຈະບໍ່ຮູ້ທຳນີ້ໄດ້ງ່າຍ

[໗໗໒] ເວັ້ນອະຣິຍະບຸກຄົນທັງຫຼາຍແລ້ວ
ໃຜນໍຄວນຈະຕັດສະຮູ້ບົດ[໑]
ທີ່ອະຣິຍະບຸກຄົນທັງຫຼາຍຕັດສະຮູ້ຖືກແລ້ວ
ບໍ່ມີອາສະວະ ປະຣິນິບພານ[໒]

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະພາສິດນີ້ຈົບລົງແລ້ວ ພິກຂຸເຫຼົ່ານັ້ນມີໃຈຊື່ນຊົມຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າຂະນະທີ່ພຣະຜູ້ມີພຣະພາກເຈົ້າ ຕັດພຣະພາສິດນີ້ຢູ່ຈິດຂອງພິກຂຸປະມານ ໖໐ ອົງລຸດພົ້ນແລ້ວຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ

**ທະວະຍະຕານຸປັດສະນາສູດທີ ໑໒ ຈົບ**

## ລວມຫົວຂໍ້ທຳປະຈຳເລື້ອງໃນພຣະສູດນີ້ ຄື

໑. ສັດຈະ
໒. ອຸປະທິ
໓. ອະວິດຊາ
໔. ສັງຂານ
໕. ວິນຍານ
໖. ຜັດສະ
໗. ເວທະນາ
໘. ຕັນຫາ
໙. ອຸປາທານ
໑໐. ອາຣຳພະ

| | |
|---|---|
| ໑໑. ອາຫານ | ໑໒. ອິນຊິຕະ |
| ໑໓. ຜັນທິຕະ | ໑໔. ຮູບ |
| ໑໕. ນິບພານສັດຈະ | ໑໖. ທຸກ |

**ມະຫາວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ປັບພັດຊາສູດ | ໒. ປະທານະສູດ |
| ໓. ສຸພາສິດສູດ | ໔. ສຸນທະຣິກພາຣະທະວາຊະສູດ |
| ໕. ມາຄະສູດ | ໖. ສະພິຍະສູດ |
| ໗. ເສລະສູດ | ໘. ສັນລະສູດ |
| ໙. ວາເສດຖະສູດ | ໑໐. ໂກກາລິກະສູດ |
| ໑໑. ນາລະກະສູດ | ໑໒. ທະວະຍະຕານຸປັດສະນາສູດ |

# ໔. ອັດຖະກະວັກ

## ໝວດວ່າດ້ວຍການບໍ່ຕິດຢູ່ໃນກາມ

## ໑. ກາມະສູດ[1]

### ວ່າດ້ວຍເລື້ອງກາມ

(ພຣະຜູ້ມີພຣະພາກເຈົ້າຕັດແກ່ພາມຜູ້ເປັນຊາວນາ ທີ່ນະຄອນສາວັດຖີດັ່ງນີ້)

[໗໗໓] ຖ້າກາມ[2]ນັ້ນສຳເລັດດ້ວຍດີແກ່ສັດນັ້ນ ຜູ້ຍາກໄດ້ກາມຢູ່
ສັດນັ້ນໄດ້ກາມຕາມທີ່ຕ້ອງການແລ້ວ
ຍ່ອມເປັນຜູ້ອີ່ມໃຈແນ່ແທ້

[໗໗໔] ຖ້າເມື່ອສັດນັ້ນຍາກໄດ້ກາມຢູ່ ເກີດຄວາມພໍໃຈແລ້ວ
ກາມເຫຼົ່ານັ້ນເສື່ອມໄປ
ສັດນັ້ນຍ່ອມເຈັບປວດ ຄືຖືກລູກສອນແທງ

[໗໗໕] ຜູ້ໃດລະກາມໄດ້ ຄືຄືນຍ່າງຫຼີບຫົວງູ
ຜູ້ນັ້ນມີສະຕິ ລ່ວງພົ້ນຕັນຫາທີ່ຊື່ວ່າ ວິສັດຕິກາ[3]ນີ້ໃນໂລກ

[໗໗໒] ນໍຣະຊົນໃດປາຖະໜາເນືອງ ໆ ເຊິ່ງໄຮ່ນາ ທີ່ດິນ ເງິນ ງົວ ມ້າ
ຂ້າທາດ ບຸຣຸດ ສະຕີ ພວກພ້ອງ ຫຼືການຫຼວງຫຼາຍ

[໗໗໗] ກິເລດທັງຫຼາຍອັນບໍ່ມີກຳລັງຄອບງຳນໍຣະຊົນນັ້ນ
ອັນຕະລາຍທັງຫຼາຍ[๔]ຍ່ຳຍີນໍຣະຊົນນັ້ນ
ຍ້ອນອັນຕະລາຍນັ້ນ ທຸກຈຶ່ງຕິດຕາມນໍຣະຊົນນັ້ນໄປ
ຄືນ້ຳໄຫຼເຂົ້າເຮືອຮົ່ວ ສັນນັ້ນ

[໗໗໘] ຍ້ອນແນວນັ້ນ ສັດເກີດ[๑]ເພິ່ງມີສະຕິທຸກເມື່ອ ລະການທັງຫຼາຍໄດ້
ເມື່ອລະການເຫຼົ່ານັ້ນໄດ້ແລ້ວ ເພິ່ງຂ້າມໂອຄະໄດ້
ຄືຄົນສະນ້ຳເຮືອແລ້ວໄປເຖິງຝັ່ງໄດ້ ສັນນັ້ນ

**ການສູດທີ ໑ ຈົບ**

## ໒. ຄຸຫັດຖະກະສູດ[๖]

## ວ່າດ້ວຍຜູ້ຂ້ອງຢູ່ໃນຖ້ຳ

(ພຣະຜູ້ມີພຣະພາກເຈົ້າ ຕັດແກ່ທ່ານພຣະປິນໂທລະພາຣະທະວາຊະທີ່ນະຄອນສາວັດຖີ ດັ່ງນີ້)

[໗໗໙] ນໍຣະຊົນຜູ້ຂ້ອງຢູ່ໃນຖ້ຳ[๗] ຖືກກິເລດຫຼວງຫຼາຍປິດບັງໄວ້
ເມື່ອດຳລົງຕົນຢູ່ (ແນວນີ້) ກໍຈົມລົງໃນເຫດໃຫ້ລຸ້ມຫຼົງ[๘]
ຜູ້ເປັນເຊັ່ນນັ້ນແລ ຍ່ອມຢູ່ໄກຈາກວິເວກ
ຍ້ອນການທັງຫຼາຍໃນໂລກບໍ່ເປັນຂອງທີ່ນໍຣະຊົນລະໄດ້ງ່າຍເລີຍ

[໗໘໐] ສັດເຫຼົ່ານັ້ນມີຄວາມປາຖະໜາເປັນຕົ້ນເຫດ
ຕິດພັນຢູ່ກັບຄວາມພໍໃຈໃນພົບ ມຸ້ງຫວັງ (ການ)
ໃນການພາຍຫຼັງ (ອະນາຄົດ)ຫຼືໃນການກ່ອນ (ອະດີດ)
ປາຖະໜາການເຫຼົ່ານີ້ແລະການທີ່ມີຢູ່ກ່ອນ
ຍ່ອມເປັນຜູ້ລຸດພົ້ນໄດ້ຍາກ (ແລະ)ເຮັດໃຫ້ຜູ້ອື່ນລຸດພົ້ນບໍ່ໄດ້ເລີຍ

[໗໘໑] ສັດເຫຼົ່ານັ້ນຍິນດີຂົນຂວາຍ ລຸ້ມຫຼົງໃນການທັງຫຼາຍ
ເປັນຜູ້ຕົກຕ່ຳ ຕັ້ງຢູ່ໃນກຳທີ່ຜິດ
ປະສົບທຸກແລ້ວຈຶ່ງຮ່ຳໄຮຢູ່ວ່າ
ເຮົາຈຸຕິຈາກພົບນີ້ ຈັກເປັນອັນໃດນໍ

[໗໘໔] ຍ້ອນແນວນັ້ນ ສັດເກີດເພິ່ງສຶກສາໃນບ່ອນນີ້[១]
ເພິ່ງຮູ້ຈັກກຳແນວໃດແນວໜຶ່ງໃນໂລກວ່າ ເປັນກຳທີ່ຜິດ
ບໍ່ເພິ່ງປະພຶດຜິດຍ້ອນເຫດແຫ່ງກຳທີ່ຜິດນັ້ນ
ນັກປາດກ່າວວ່າ ຊີວິດນີ້ເປັນຂອງໜ້ອຍ

[໗໘໖] ເຮົາເຫັນໝູ່ສັດນີ້ຜູ້ຕົກໄປໃນອຳນາດຕັນຫາໃນພົບທັງຫຼາຍ[២]
ກຳລັງດີ້ນຣົນຢູ່ໃນໂລກ
ນໍຣະຊົນທີ່ຊົ່ວຜູ້ຍັງບໍ່ຄາຍຕັນຫາໃນພົບນ້ອຍພົບໃຫຍ່
ຮ່ຳໄຮຢູ່ໃກ້ປາກມັດຈຸຣາດ

[໗໘໔] ພວກທ່ານຈົ່ງເບິ່ງໝູ່ສັດຜູ້ກຳລັງດີ້ນຣົນຢູ່
ຍ້ອນວັດຖຸທີ່ຍຶດຖືວ່າເປັນຂອງເຮົາ
ຄືຝູງປາໃນນ້ຳໜ້ອຍສິ້ນກະແສແລ້ວ
ນໍຣະຊົນເຫັນໂທດນີ້ແລ້ວກໍຢ່າກໍ່ຕັນຫາເຄື່ອງກ່ຽວຂ້ອງໃນພົບທັງຫຼາຍ
ເພິ່ງປະພຶດບໍ່ຍຶດຖືວ່າ ເປັນຂອງເຮົາ

[໗໘໕] ນັກປາດເພິ່ງກຳຈັດຄວາມພໍໃຈໃນສ່ວນສຸດທັງ ໒ ດ້ານ
ກຳນົດຮູ້ຜັດສະ[៣]ແລ້ວ ກໍບໍ່ຕິດໃຈ
ຕິຕຽນກຳໃດດ້ວຍຕົນ ກໍບໍ່ເຮັດກຳນັ້ນ
ບໍ່ຕິດໃນສິ່ງທີ່ໄດ້ເຫັນແລະໄດ້ຍິນແລ້ວ

[໗໘໖] ມຸນີກຳນົດຮູ້ສັນຍາແລ້ວ ບໍ່ເຂົ້າໄປຕິດໃນຄວາມຍຶດຖືທັງຫຼາຍ
ເພິ່ງຂ້າມໂອຄະໄດ້ ຖອນລູກສອນໄດ້ແລ້ວ ບໍ່ຜະໝາດ
ປະພຶດຢູ່ ຍ່ອມບໍ່ຫວັງໂລກນີ້ແລະໂລກໜ້າ

**ຄຸຫັດຖະກະສູດທີ ໒ ຈົບ**

## ໓. ທຸດທັດຖະກະສູດ[១]

## ວ່າດ້ວຍເລື່ອງເດຍຣະຖີກັບມຸນີ

(ພຣະຜູ້ມີພຣະພາກເຈົ້າຕັດແກ່ພຣະອານົນດັ່ງນີ້)

[໗໘໗] ເດຍຣະຖີລາງພວກມີໃຈຊົ່ວກ່າວຮ້າຍ
ບຸກຄົນເຫຼົ່າອື່ນເຂົ້າໃຈວ່າຈິງກໍກ່າວຮ້າຍດ້ວຍ

ແຕ່ມຸນີຍ່ອມບໍ່ໃສ່ໃຈຄຳກ່າວຮ້າຍທີ່ເກີດຂຶ້ນ
ຍ້ອນແນວນັ້ນ ມຸນີຈຶ່ງບໍ່ມີກິເລດເຄື່ອງຕຶງຈິດໃນບ່ອນໃດ ໆ

[ກ໗໗] ຜູ້ໄປຕາມຄວາມພໍໃຈ ຕັ້ງຢູ່ໃນຄວາມພໍໃຈ
ເພິ່ງກ້າວລ່ວງທິດຖິຂອງຕົນໄດ້ແນວໃດນໍ
ແຕ່ເມື່ອເຮັດຕົນໃຫ້ພຽບພ້ອມ ຮູ້ແນວໃດກໍເພິ່ງເວົ້າແນວນັ້ນ

[ກ໗໘] ສັດເກີດໃດບໍ່ມີໃຜຖາມ
ກໍບອກສີນແລະຂໍ້ວັດປະຕິບັດຂອງຕົນແກ່ບຸກຄົນເຫຼົ່າອື່ນ
ສັດເກີດໃດກ່າວເຖິງໂຕເອງທໍ່ນັ້ນ
ຜູ້ສະຫຼາດທັງຫຼາຍຮຽກສັດເກີດນັ້ນວ່າ ຜູ້ບໍ່ມີອະຣິຍະທຳ

[ກ໘໐] ສ່ວນພິກຂຸຜູ້ສະງົບ ດັບກິເລດແລ້ວ
ບໍ່ໂອ້ອວດໃນສີນທັງຫຼາຍວ່າ ເຮົາເປັນດັ່ງນີ້
ອັນໜຶ່ງ ພິກຂຸໃດບໍ່ມີກິເລດເຄື່ອງຟູໃນບ່ອນໃດ ໆ ໃນໂລກ
ຜູ້ສະຫຼາດທັງຫຼາຍຮຽກພິກຂຸນັ້ນວ່າ ຜູ້ມີອະຣິຍະທຳ

[ກ໘໑] ເຈົ້າລັດທິໃດ ມີທຳທີ່ກຳນົດໄວ້ ອັນປັດໄຈປຸງແຕ່ງເຊີດຊູໄວ້
(ແຕ່)ບໍ່ຂາວສະອາດ ເຈົ້າລັດທິນັ້ນເຫັນອານິສົງໃດໃນຕົນ
ອາໄສອານິສົງນັ້ນ ແລະສັນຕິ°ທີ່ກຳເຣີບເຊິ່ງອາໄສກັນເກີດຂຶ້ນ

[ກ໘໒] ຄວາມຖືໝັ້ນດ້ວຍອຳນາດທິດຖິ ບໍ່ແມ່ນກ້າວລ່ວງໄດ້ງ່າຍ ໆ
ການປົງໃຈໃນທຳທັງຫຼາຍແລ້ວຖືໝັ້ນ
ກໍບໍ່ແມ່ນກ້າວລ່ວງໄດ້ງ່າຍ
ຍ້ອນແນວນັ້ນ ໃນຄວາມຖືໝັ້ນເຫຼົ່ານັ້ນ
ນໍຣະຊົນຍ່ອມກຳຈັດຖິ້ມທຳແດ່ ຍຶດຖືທຳໄວ້ແດ່

[ກ໘໓] ທິດຖິທີ່ກຳນົດ (ເພື່ອເກີດ)ໃນພົບນ້ອຍພົບໃຫຍ່
ຂອງຜູ້ມີປັນຍາເຄື່ອງກຳຈັດບໍ່ມີໃນບ່ອນໃດ ໆ ໃນໂລກ
ຍ້ອນຜູ້ມີປັນຍາເຄື່ອງກຳຈັດນັ້ນ
ລະຄວາມຫຼອກລວງແລະຄວາມຖືໂຕໄດ້ແລ້ວ
ບໍ່ມີຄວາມຖືໝັ້ນ ຈະເພິ່ງໄປນຳເຫດອັນໃດນໍ

[ກ໘໔] ຍ້ອນວ່າ ຜູ້ມີຄວາມຖືໝັ້ນຍ່ອມເຂົ້າເຖິງວາທະໃນທຳທັງຫຼາຍ

ຈະເພິ່ງກ່າວຄຳຕິຕຽນຜູ້ບໍ່ມີຄວາມຖືໝັ້ນດ້ວຍເຫດອັນໃດນໍ
ຍ້ອນທິດຖິວ່າມີອັດຕາ ທິດຖິວ່າບໍ່ມີອັດຕາ[໔]
ບໍ່ມີແກ່ຜູ້ບໍ່ມີຄວາມຖືໝັ້ນນັ້ນ
ຜູ້ບໍ່ມີຄວາມຖືໝັ້ນນັ້ນ ກຳຈັດແລ້ວເຊິ່ງທິດຖິທັງປວງໃນອັດຕະພາບນີ້ແລ

**ທຸດທັດຖະກະສູດທີ ໓ ຈົບ**

## ໔. ສຸດທັດຖະກະສູດ[໑]

## ວ່າດ້ວຍຜູ້ພິຈາລະນາເຫັນຄວາມບໍລິສຸດ

(ພຣະຜູ້ມີພຣະພາກເຈົ້າຕັດແກ່ພິກຂຸທັງຫຼາຍດັ່ງນີ້)

[໗໙໕] ເຮົາເຫັນນໍຣະຊົນຜູ້ບໍລິສຸດວ່າ ເປັນຜູ້ບໍ່ມີພະຍາດຢ່າງຍິ່ງ
ຄວາມບໍລິສຸດຍ່ອມມີແກ່ນໍຣະຊົນຍ້ອນຄວາມເຫັນ
ບຸກຄົນເມື່ອຮູ້ຈິງແນວນີ້ກໍຮູ້ວ່າ ຄວາມເຫັນນີ້ປະເສີດ
ຈຶ່ງເປັນຜູ້ພິຈາລະນາເຫັນຄວາມບໍລິສຸດ
ຍ້ອນແນວນັ້ນ ຍ່ອມເຊື່ອວ່າ ຄວາມເຫັນນັ້ນເປັນຍານ

[໗໙໖] ຖ້າຄວາມບໍລິສຸດມີແກ່ນໍຣະຊົນຍ້ອນຄວາມເຫັນ
ຫຼືນໍຣະຊົນນັ້ນລະທຸກໄດ້ຍ້ອນຍານ
ນໍຣະຊົນຜູ້ຍັງມີອຸປະທິນັ້ນຍ່ອມບໍລິສຸດຍ້ອນມັກອື່ນ (ກໍໄດ້)
ຍ້ອນວ່າ ທິດຖິຍ່ອມບົ່ງບອກເຖິງນໍຣະຊົນນັ້ນຜູ້ເວົ້າແນວນັ້ນ

[໗໙໗] ພາມ[໒] ບໍ່ກ່າວຄວາມບໍລິສຸດໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ
ສີນແລະຂໍ້ວັດປະຕິບັດຫຼືອາລົມທີ່ຮັບຮູ້ໂດຍມັກອື່ນ
ພາມນັ້ນຜູ້ບໍ່ເຂົ້າໄປຕິດໃນບຸນແລະບາບ ລະອັດຕາໄດ້[໓]
ຮຽກວ່າ ຜູ້ບໍ່ເຮັດເພີ່ມເຕີມໃນໂລກນີ້

[໗໙໘] ສະມະນະພາມເຫຼົ່ານັ້ນລະສິ່ງທຳອິດ ອາໄສສິ່ງຫຼັງ
ໄປຕາມຄວາມພຸ່ງພ່ານ[໔]
ຍ່ອມຂ້າມກິເລດເຄື່ອງຂ້ອງບໍ່ໄດ້
ສະມະນະພາມເຫຼົ່ານັ້ນຍ່ອມຍຶດຖື ຍ່ອມກຳຈັດຖິ້ມ
ຄືລິງຈັບງ່າໄມ້ແລ້ວກໍປ່ອຍ ສັນນັ້ນ

[໗໙໙] ສັດເກີດສະມາທານຂໍ້ວັດປະຕິບັດທັງຫຼາຍເອງ
ຂ້ອງຢູ່ໃນສັນຍາ[໑] ຍ່ອມດຳເນີນໄປຫຼຸບ ໆ ໂນນ ໆ
ສ່ວນຜູ້ມີຄວາມຮູ້ ຮູ້ທຳດ້ວຍເວດທັງຫຼາຍ[໒]ແລ້ວ
ເປັນຜູ້ມີປັນຍາອັນເຕັມປ່ຽມ
ຍ່ອມບໍ່ດຳເນີນໄປຫຼຸບ ໆ ໂນນ ໆ

[໘໐໐] ຜູ້ມີປັນຍານັ້ນ ເປັນຜູ້ກຳຈັດເສນາໃນທຳທັງປວງ ຄື
ຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼືອາລົມທີ່ຮັບຮູ້ແນວໃດແນວໜຶ່ງ
ໃຜ ໆ ໃນໂລກນີ້ຈະເພິ່ງກຳນົດຜູ້ມີປັນຍານັ້ນ
ຜູ້ເຫັນຜູ້ປະພຶດເປີດເຜີຍດ້ວຍເຫດອັນໃດນໍ

[໘໐໑] ສັດຕະບຸຣຸດທັງຫຼາຍຍ່ອມບໍ່ກຳນົດ ບໍ່ເຊີດຊູ
ສັດຕະບຸຣຸດເຫຼົ່ານັ້ນບໍ່ກ່າວວ່າເປັນຄວາມບໍລິສຸດໂຕ່ງ
ກຳຈັດກິເລດເຄື່ອງຮ້ອຍຮັດອັນເປັນເຫດຍຶດໝັ້ນ ທີ່ຮ້ອຍຮັດໄວ້ແລ້ວ
ບໍ່ກໍ່ຄວາມຫວັງໃນບ່ອນໃດ ໆ ໃນໂລກ

[໘໐໒] ພຣະອະຣະຫັນເປັນຜູ້ໄປພົ້ນເຂດແດນ[໓]ແລ້ວ ເປັນພາມ
ຍ້ອນຮູ້ແລະເຫັນ ພຣະອະຣະຫັນນັ້ນຈຶ່ງບໍ່ມີຄວາມຖືໝັ້ນ
ບໍ່ມີຄວາມກຳໜັດໃນກາມມະຄຸນອັນເປັນທີ່ກຳໜັດ
ບໍ່ກຳໜັດໃນສະມາບັດເປັນທີ່ຄາຍກຳໜັດ
ພຣະອະຣະຫັນນັ້ນຈຶ່ງບໍ່ມີຄວາມຖືໝັ້ນວ່າ ປະເສີດໃນໂລກນີ້

**ສຸດທັດຖະກະສູດທີ ໔ ຈົບ**

## ໕. ປະຣະມັຕຖະກະສູດ[໑]

## ວ່າດ້ວຍຜູ້ຍຶດຖືທິດຖິຂອງຕົນວ່າປະເສີດ

(ພຣະຜູ້ມີພຣະພາກເຈົ້າຕັດແກ່ພິກຂຸທັງຫຼາຍດັ່ງນີ້)

[໘໐໓] ສັດເກີດຜູ້ຍຶດຖືໃນທິດຖິທັງຫຼາຍວ່າ ປະເສີດ
ຍ່ອມເຮັດທິດຖິໃດໃຫ້ຍິ່ງໃຫຍ່ໃນໂລກ
ກ່າວທິດຖິອື່ນທຸກຢ່າງນອກຈາກທິດຖິນັ້ນວ່າ ຊົ່ວ
ຍ້ອນແນວນັ້ນ ສັດເກີດນັ້ນຈຶ່ງບໍ່ລ່ວງພົ້ນການຜິດຖຽງໄປໄດ້

[໙໐໔] ເຈົ້າລັດທິເຫັນອານິສົງໃດໃນຕົນ ໃນຮູບທີ່ເຫັນ
ໃນສຽງທີ່ໄດ້ຍິນ ໃນສີນແລະຂໍ້ວັດປະຕິບັດ ຫຼືໃນອາລົມທີ່ຮັບຮູ້
ເຈົ້າລັດທິນັ້ນຍຶດໝັ້ນທິດຖິນັ້ນໃນລັດທິຂອງຕົນນັ້ນ
ເຫັນທິດຖິອື່ນທັງປວງໂດຍຄວາມເປັນຂອງຊົ່ວ

[໙໐໕] ບຸກຄົນອາໄສສາດສະດາໃດ ເຫັນສາດສະດາອື່ນວ່າ ຊົ່ວ
ຜູ້ສະຫຼາດທັງຫຼາຍຮຽກສາດສະດານັ້ນວ່າ ເປັນເຄື່ອງຮ້ອຍຮັດ
ຍ້ອນແນວນັ້ນແລ ພິກຂຸຈຶ່ງບໍ່ຄວນອາໄສຮູບທີ່ເຫັນ
ສຽງທີ່ໄດ້ຍິນ ອາລົມທີ່ຮັບຮູ້ ຫຼືສີນແລະຂໍ້ວັດປະຕິບັດ

[໙໐໖] ພິກຂຸບໍ່ເພິ່ງກຳນົດທິດຖິໃນໂລກດ້ວຍຍານ

ຫຼື ແມ່ນດ້ວຍສີນແລະຂໍ້ວັດປະຕິບັດ
ບໍ່ເພິ່ງເອົາຕົນເຂົ້າໄປທຽບວ່າສະເໝີເຂົາ
ບໍ່ເພິ່ງສຳຄັນຕົນວ່າຕ່ຳຕ້ອຍກວ່າເຂົາ ຫຼືເລີດກວ່າເຂົາ

[໙໐໗] ພິກຂຸນັ້ນລະອັດຕາແລ້ວ ບໍ່ຍຶດຖື ບໍ່ສ້າງນິໄສແມ່ນດ້ວຍຍານ
ເມື່ອຊົນທັງຫຼາຍແຕກກັນ
ພິກຂຸນັ້ນກໍບໍ່ເຂົ້າເປັນຝັກເປັນຝ່າຍ
ພິກຂຸນັ້ນບໍ່ຖືແມ່ນທິດຖິອັນໃດ ໆ

[໙໐໘] ພຣະອະຣະຫັນໃດຜູ້ບໍ່ມີຄວາມຄະນຶງຫາໃນສ່ວນສຸດທັງ ໒ ດ້ານ
ໃນໂລກນີ້ ໃນພົບນ້ອຍພົບໃຫຍ່ ໃນໂລກນີ້ຫຼືໃນໂລກໜ້າ
ພຣະອະຣະຫັນນັ້ນຈຶ່ງບໍ່ມີເຄື່ອງຢູ່ອັນໃດ ໆ
ຄວາມຕົກລົງໃຈໃນທຳທັງຫຼາຍແລ້ວຖືໝັ້ນກໍບໍ່ມີ

[໙໐໙] ພຣະອະຣະຫັນນັ້ນບໍ່ມີທິດຖິອັນສັນຍາກຳນົດໄວ້ແມ່ນບໍ່ຫຼາຍ
ໃນຮູບທີ່ເຫັນ ໃນສຽງທີ່ໄດ້ຍິນ ຫຼືໃນອາລົມທີ່ຮັບຮູ້ໃນໂລກນີ້
ໃຜ ໆ ໃນໂລກນີ້ ຈະເພິ່ງກຳນົດພຣະອະຣະຫັນນັ້ນ
ຜູ້ເປັນພາມບໍ່ຍຶດຖືທິດຖິຢູ່ດ້ວຍເຫດອັນໃດນໍ

[໙໑໐] ພຣະອະຣະຫັນຕະຂີນາສົບທັງຫຼາຍ
ຍ່ອມບໍ່ກຳນົດ ບໍ່ເຊີດຊູ (ຕັນຫາແລະທິດຖິ)ໄວ້
ແມ່ນທຳທັງຫຼາຍ[໑]ພຣະອະຣະຫັນເຫຼົ່ານັ້ນກໍບໍ່ປາຖະໜາ

ພຣະອະຣະຫັນຜູ້ເປັນພາມນັ້ນ ໃຜ ໆ ກໍນໍາໄປດ້ວຍສິນແລະຂໍ້ວັດປະຕິບັດບໍ່ໄດ້
ເປັນຜູ້ເຖິງຝັ່ງ[໒] ບໍ່ກັບມາ ເປັນຜູ້ໝັ້ນຄົງ

**ປະຣະມັດຖະກະສູດທີ ໕ ຈົບ**

## ໖. ຊະຣາສູດ[໑]

## ວ່າດ້ວຍຊະຣາ

(ພຣະຜູ້ມີພຣະພາກເຈົ້າຕັດແກ່ພຸດທະບໍລິສັດຊາວເມືອງສາເກດດັ່ງນີ້)

[໘໑໑] ຊີວິດນີ້ໜ້ອຍແທ້ ມະນຸດຍ່ອມຕາຍພາຍໃນ ໑໐໐ ປີ
ແມ່ນຫາກຜູ້ໃດຈະມີຊີວິດຢູ່ເກີນໄປກວ່ານັ້ນ
ຜູ້ນັ້ນກໍຈະຕາຍຍ້ອນຊະຣາແນ່ແທ້

[໘໑໒] ຊົນທັງຫຼາຍຍ່ອມເສົ້າໂສກ ຍ້ອນວັດຖຸທີ່ຍຶດຖືວ່າ ເປັນຂອງເຮົາ
ຍ້ອນຄວາມຍຶດຖືທີ່ທ່ຽງແທ້ບໍ່ມີຢູ່
ຄວາມພັດພາກຈາກກັນນີ້ເປັນສິ່ງທີ່ມີຢູ່ຈິງ
ກຸນລະບຸດເຫັນດັ່ງນີ້ແລ້ວ ບໍ່ເພິ່ງຄອງເຮືອນ

[໘໑໓] ບຸຣຸດຍ່ອມສໍາຄັນປັນຈະຂັນໃດວ່າ ນີ້ຂອງເຮົາ
ປັນຈະຂັນນັ້ນບຸຣຸດນັ້ນຍ່ອມລະໄປຍ້ອນຄວາມຕາຍ
ບັນດິດຜູ້ເປັນພຸດທະມາມະກະ ຮູ້ແຈ້ງໂທດນີ້ແລ້ວ
ບໍ່ເພິ່ງນ້ອມໄປເພື່ອຄວາມຍຶດຖືວ່າ ເປັນຂອງເຮົາ

[໘໑໔] ບຸຣຸດຜູ້ຕື່ນຂຶ້ນແລ້ວ
ບໍ່ເຫັນສິ່ງທີ່ກ່ຽວຂ້ອງດ້ວຍຄວາມຝັນ ສັນໃດ
ໃຜ ໆ ກໍບໍ່ເຫັນຊົນຜູ້ເປັນທີ່ຮັກ ເຊິ່ງຕາຍຈາກໄປແລ້ວ ສັນນັ້ນ

[໘໑໕] ຊື່ຂອງຊົນເຫຼົ່າໃດທີ່ກ່າວກັນຢູ່ນີ້
ຊົນເຫຼົ່ານັ້ນຍັງເຫັນກັນຢູ່ແດ່ ຍັງໄດ້ຍິນກັນຢູ່ແດ່
ສັດເກີດຈາກໄປແລ້ວ ເຫຼືອໄວ້ແຕ່ຊື່ທີ່ນັ້ນເພື່ອກ່າວຂານກັນ

[໘໑໖] ຊົນທັງຫຼາຍຜູ້ຕິດໃຈໃນວັດຖຸທີ່ຍຶດຖືວ່າ ເປັນຂອງເຮົາ
ຍ່ອມລະຖິ້ມຄວາມໂສກເສົ້າ ຄວາມຮໍ່າໄຮ ແລະຄວາມຂີ້ຖີ່ບໍ່ໄດ້

ຍ້ອນແນວນັ້ນ ມຸນີຜູ້ເຫັນແດນກະເສມ ລະຄວາມຢຶດຖືໄດ້ແລ້ວ ທ່ຽວໄປ

[໘໑໗] ບັນດິດທັງຫຼາຍກ່າວການບໍ່ສະແດງຕົນໃນພົບ
ຂອງພິກຂຸຜູ້ປະພຶດຫຼີກຫຼີກ ໃຊ້ບ່ອນນັ່ງອັນສະຫງັດນັ້ນວ່າ
ເປັນຄວາມສາມັກຄີ

[໘໑໘] ມຸນີບໍ່ອາໄສໃນສິ່ງທັງປວງ ບໍ່ເຮັດສິ່ງໃດໃຫ້ເປັນທີ່ຮັກ
ແລະບໍ່ເຮັດສິ່ງໃດໃຫ້ບໍ່ເປັນທີ່ຮັກ
ຄວາມຮ່ຳໄຮແລະຄວາມຂີ້ຖີ່ບໍ່ຕິດຢູ່ໃນມຸນີນັ້ນ
ຄືຢາດນ້ຳບໍ່ຕິດຢູ່ເທິງໃບບົວ ສັນນັ້ນ

[໘໑໙] ມຸນີບໍ່ຕິດພັນໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ ແລະອາລົມທີ່ຮັບຮູ້
ຄືຢົດນ້ຳບໍ່ຕິດຢູ່ເທິງໃບບົວ
ຄືຢາດນ້ຳບໍ່ຕິດຢູ່ເທິງດອກບົວ ສັນນັ້ນ

[໘໔໐] ພຣະອະຣະຫັນຜູ້ມີປັນຍາເຄື່ອງກຳຈັດ
ຍ່ອມບໍ່ສຳຄັນໝາຍຮູບທີ່ເຫັນ
ສຽງທີ່ໄດ້ຍິນ ແລະອາລົມທີ່ຮັບຮູ້
ພຣະອະຣະຫັນນັ້ນບໍ່ຕ້ອງການຄວາມບໍລິສຸດດ້ວຍມັກອື່ນ
ຍ່ອມບໍ່ກຳໜັດ ຍ່ອມບໍ່ຕ້ອງຄາຍກຳໜັດ

**ຊະຣາສູດທີ ໖ ຈົບ**

## ໗. ຕິດສະເມດເຕີຍຍະສູດ

### ວ່າດ້ວຍບັນຫາຂອງຕິດສະເມດເຕີຍຍະ

(ທ່ານພຣະຕິດສະເມດເຕີຍຍະໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້)

[໘໔໑] ຂ້າແດ່ພຣະອົງຜູ້ນິຣະທຸກ ຂໍພຣະອົງໂຜດຕັດບອກ
ຄວາມຄັບແຄ້ນຂອງບຸກຄົນຜູ້ປະກອບເມຖຸນທຳເນືອງ ໆ
ຂ້າພຣະອົງຟັງຄຳສອນຂອງພຣະອົງແລ້ວຈັກສຶກສາວິເວກ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ ເມດເຕີຍຍະ)

[໘໔໒] ຄຳສັ່ງສອນຂອງບຸກຄົນຜູ້ປະກອບເມຖຸນທຳເນືອງ ໆ

ຍ່ອມເລີເລືອນ ແລະບຸກຄົນນັ້ນຍ່ອມປະຕິບັດຜິດ
ການປະຕິບັດນີ້ ເປັນທຳບໍ່ປະເສີດໃນບຸກຄົນນັ້ນ

[໘໔໓] ຜູ້ໃດໃນເບື້ອງຕົ້ນທ່ຽວໄປຜູ້ດຽວ[໑]
(ຕໍ່ມາ)ເຂົ້າໄປເສບເມຖຸນທຳ[໒]
ຜູ້ຮູ້ທັງຫຼາຍຮຽກຜູ້ນັ້ນວ່າ ເປັນປຸຖຸຊົນຊົ່ວໃນໂລກ
ຄືຍານທີ່ແລ່ນໄປ[໓] ສັນນັ້ນ

[໘໔໔] ຍົດແລະກຽດ[໔]ໃນເບື້ອງຕົ້ນຂອງພິກຂຸນັ້ນ ເສື່ອມໄປ
ພິກຂຸເຫັນສົມບັດແລະວິບັດນີ້ແລ້ວ ເພິ່ງສຶກສາເພື່ອລະເມຖຸນທຳ

[໘໔໕] ພິກຂຸນັ້ນຖືກຄວາມດຳຣິຄອບງຳ
ຍ່ອມຈຸກເຈົ່າຄືຄົນກຳພ້າ
ເມື່ອໄດ້ຍິນຄຳຕຳໜິຂອງຄົນອື່ນແລ້ວ
ຍ່ອມເປັນຜູ້ເກີ້ເຂີນ ເປັນຜູ້ເຊັ່ນນັ້ນ

[໘໔໖] ລຳດັບນັ້ນ ພິກຂຸນັ້ນຖືກຄຳເວົ້າຂອງຜູ້ອື່ນຕັກເຕືອນແລ້ວ
ຍ່ອມສ້າງອາວຸດ[໕]ຍ່ອມກ້າວລົງສູ່ຄວາມເປັນຄົນເວົ້າຕົວະ
ນີ້ແລເປັນເຄື່ອງເຮັດໃຫ້ຕິດໃຫຍ່ຂອງທ່ານ

[໘໔໗] ພິກຂຸ (ໃນເບື້ອງຕົ້ນ) ໄດ້ສົມຍານາມວ່າ ເປັນບັນດິດ
ອະທິຖານການທ່ຽວໄປຜູ້ດຽວ
ຕໍ່ມາ ທ່ານປະກອບໃນເມຖຸນທຳ
ກໍຈັກມົວໝອງ ຄືກັບຄົນໂງ່ ສັນນັ້ນ

[໘໔໘] ມຸນີຮູ້ໂທດນີ້ແລ້ວ ໃນເວລາເປັນຄະລິຫັດ
ກ່ອນບວດໃນທຳວິໄນນີ້
ເພິ່ງທຳການທ່ຽວໄປຜູ້ດຽວໃຫ້ໝັ້ນຄົງ
ບໍ່ເພິ່ງເຂົ້າໄປເສບເມຖຸນທຳ

[໘໔໙] ບຸກຄົນເພິ່ງສຶກສາວິເວກນັ້ນແລ
ຍ້ອນການປະພຶດວິເວກນີ້ ເປັນກິດສູງສຸດຂອງພຣະອະຣິຍະທັງຫຼາຍ
ບໍ່ເພິ່ງສຳຄັນຕົນວ່າເຮົາເປັນຜູ້ປະເສີດສຸດ ດ້ວຍການປະພຶດວິເວກນັ້ນ
ຜູ້ນັ້ນແລ ຊື່ວ່າ ຢູ່ໃກ້ນິບພານ

[໗໓໐] ໝູ່ສັດຜູ້ຕິດໃຈໃນກາມທັງຫຼາຍ
ຍ່ອມຍິນດີມຸນີຜູ້ວາງ ປະພຶດຢູ່
ບໍ່ມຸ້ງຫວັງກາມທັງຫຼາຍ ຜູ້ຂ້າມໂອຄະໄດ້ແລ້ວ

**ຕິດສະເມດເຕີຍຍະສູດທີ ໗ ຈົບ**

## ໘. ປະສູຣະສູດ[1]

## ວ່າດ້ວຍປະຣິພາຊົກຊື່ວ່າປະສູຣະ

(ພຣະຜູ້ມີພຣະພາກເຈົ້າຕັດແກ່ປະສູຣະປະຣິພາຊົກໃນທ່າມກາງພຸດທະບໍລິສັດດັ່ງນີ້)

[໗໓໑] ສະມະນະພາມຫຼວງຫຼາຍ
ຍ່ອມກ່າວຄວາມບໍລິສຸດໃນທຳນີ້ທີ່ນັ້ນ
ບໍ່ກ່າວຄວາມບໍລິສຸດໃນທຳເຫຼົ່າອື່ນ
ບຸກຄົນອາໄສສາດສະດາໃດກໍກ່າວສາດສະດານັ້ນວ່າດີງາມ
ຍ້ອນທິດຖິຂອງຕົນນັ້ນ ເປັນຜູ້ຕັ້ງຢູ່ໃນປັດເຈກສັດຈະ[2]

[໗໓໒] ສະມະນະພາມເຫຼົ່ານັ້ນເປັນຄົນຢາກເວົ້າ
ເຂົ້າໄປສູ່ບໍລິສັດແລ້ວ ຈັບຄູ່ກ່າວຫາກັນແລະກັນວ່າ ເປັນຄົນພານ
ສະມະນະພາມເຫຼົ່ານັ້ນອາໄສສິ່ງອື່ນແລ້ວ
ຍ່ອມກ່າວຄຳເວົ້າຂັດແຍ່ງກັນ
ຢາກໄດ້ຄວາມສັນເສີນ ກໍກ່າວຍົກຕົນວ່າ ເປັນຜູ້ສະຫຼາດ

[໗໓໓] ຄົນຜູ້ປະກອບຄຳເວົ້າ (ເພື່ອກ່າວ) ໃນທ່າມກາງບໍລິສັດ
ເມື່ອຢາກໄດ້ຄວາມສັນເສີນ ຍ່ອມເປັນຜູ້ລັງເລໃຈ
ເປັນຜູ້ເກີ້ເຂີນໃນເມື່ອຖືກຄັດຄ້ານຕົກໄປ
ຍ່ອມຄຽດເຄືອງຍ້ອນຄຳນິນທາ ສະແຫວງຫາຂໍ້ແກ້ໂຕ

[໗໓໔] ບໍລິສັດຜູ້ພິຈາລະນາບັນຫາກ່າວວາທະຂອງເຂົາວ່າ ຊົ່ວ
ຖືກຄັດຄ້ານໃຫ້ຕົກໄປແລ້ວ
ເຂົາເສື່ອມວາທະໄປແລ້ວ ຍ່ອມຮ່ຳໄຮເສົ້າໂສກ
ທອດຖອນໃຈວ່າ ເຂົານຳ (ໜ້າ) ເຮົາໄປແລ້ວ

[໗໓໕] ການຜິດຖຽງເຫຼົ່ານີ້ເກີດແລ້ວໃນໝູ່ສະມະນະ

ຄວາມຍິນດີແລະຄວາມຍິນຮ້າຍ ມີຢູ່ໃນການຜິດຖຽງເຫຼົ່ານີ້
ບຸກຄົນເຫັນໂທດນີ້ແລ້ວ ເພິ່ງງົດເວັ້ນຄຳເວົ້າຂັດແຍ່ງກັນ
ຍ້ອນວ່າບໍ່ມີປະໂຫຍດອື່ນນອກຈາກການໄດ້ຄວາມສັນເສີນ

[໗໓໖] ກໍຫຼືວ່າ ບຸກຄົນກ່າວວາທະໃນທ່າມກາງບໍລິສັດ
ໄດ້ຮັບຄວາມສັນເສີນຍ້ອນທິດຖິຂອງຕົນນັ້ນ
ເຂົາຍ່ອມຫົວແລະຟູໃຈດ້ວຍປະໂຫຍດແຫ່ງຄວາມຊະນະນັ້ນ
ຍ້ອນໄດ້ບັນລຸເຖິງປະໂຫຍດຕາມທີ່ໃຈຄິດໄວ້ແລ້ວ
[໗໓໗] ຄວາມລຳພອງຕົນ ຍ່ອມເປັນພູມສຳລັບຢ່ຳຍີຂອງເຂົາ
ເຂົາຈຶ່ງກ່າວຄຳຖືໂຕແລະຄຳດູໝິ່ນກັນ
ບຸກຄົນເຫັນໂທດນີ້ແລ້ວ ບໍ່ຄວນຜິດຖຽງກັນ
ຍ້ອນຜູ້ສະຫຼາດທັງຫຼາຍ ບໍ່ກ່າວຄວາມບໍລິສຸດ
ດ້ວຍຄວາມຜິດຖຽງກັນນັ້ນ

[໗໓໘] ຄົນກ້າທີ່ໄດ້ຮັບການລ້ຽງດູດ້ວຍຂອງສະເຫວີຍຂອງພຣະຣາຊາ
ເຂົາຄຶກຄະນອງ ຢາກພົບຄົນກ້າຝ່າຍກົງກັນຂ້າມຍ່ອມໄດ້ພົບ ສັນໃດ
(ເຈົ້າລັດທິຍ່ອມໄດ້ພົບເຈົ້າລັດທິ ສັນນັ້ນ)
ຜູ້ກ້າເອີຍ ເຈົ້າລັດທິຢູ່ບ່ອນໃດ ທ່ານຈົ່ງໄປສາຈາກບ່ອນນັ້ນເຖີ້ນ
ຍ້ອນກິເລດທີ່ເຄີຍມີແຕ່ກ່ອນຂອງຕະຖາຄົດບໍ່ໄດ້ມີເພື່ອການຮົບ
[໗໓໙] ຊົນເຫຼົ່າໃດຖືທິດຖິແລ້ວຜິດຖຽງກັນ
ແລະກ່າວອ້າງວ່າ ນີ້ທໍ່ນັ້ນຈິງ
ທ່ານຈົ່ງເວົ້າກັບຊົນເຫຼົ່ານັ້ນວ່າ ກິເລດທີ່ເປັນຂ້າເສິກກັນ
ເມື່ອວາທະເກີດບໍ່ມີໃນທຳວິໄນນີ້
[໗໔໐] ພຣະອະຣະຫັນເຫຼົ່າໃດ ກຳຈັດເສນາໄດ້ແລ້ວ
ບໍ່ເອົາທິດຖິໄປກະທົບທິດຖິ ທ່ຽວໄປ
ພຣະອະຣະຫັນເຫຼົ່າໃດໃນທຳວິໄນນີ້
ບໍ່ມີຄວາມຖືໝັ້ນສິ່ງນີ້ວ່າ ປະເສີດ
ປະສູຣະເອີຍ ທ່ານຈະເພິ່ງໄດ້ອັນໃດ ໃນພຣະອະຣະຫັນເຫຼົ່ານັ້ນ
[໗໔໑] ອັນໜຶ່ງ ທ່ານນຶກຢູ່ມາແລ້ວ ທ່ານຄິດທິດຖິທັງຫຼາຍດ້ວຍໃຈ
ມາເຖິງການແຂ່ງຄູ່ກັບເຮົາຜູ້ມີປັນຍາເຄື່ອງກຳຈັດແລ້ວ
ຍ່ອມບໍ່ສາມາດທຽມທັນໄດ້ເລີຍ

**ປະສູຣະສູດທີ ໗ ຈົບ**

## ໙. ມາຄັນທິຍະສູດ[១]

### ວ່າດ້ວຍມາຄັນທິຍະພາມ

(ພຣະຜູ້ມີພຣະພາກເຈົ້າຕັດແກ່ມາຄັນທິຍະພາມພ້ອມພັນລະຍາດັ່ງນີ້)

[໗໔໘] ຍ້ອນເຫັນນາງຕັນຫາ ນາງອໍຣະດີ ແລະນາງຣາຄາ
ກໍບໍ່ໄດ້ມີຄວາມພໍໃຈໃນເມຖຸນທຳເລີຍ
ຈັກມີຄວາມພໍໃຈຍ້ອນເຫັນເຮືອນຮ່າງ
ທີ່ເຕັມໄປນຳປັດສາວະແລະອຸດຈາຣະນີ້ໄດ້ແນວໃດນໍ
ເຮົາບໍ່ປາຖະໜາຈະຖືກຕ້ອງເຮືອນຮ່າງນາງແມ່ນດ້ວຍຕີນ

(ມາຄັນທິຍະພາມທູນຖາມດັ່ງນີ້)

[໗໔໙] ຫາກທ່ານບໍ່ປາຖະໜານາຣີຜູ້ເປັນອິດຖີຣັດຕະນະແນວນີ້
ທີ່ພຣະຣາຊາຜູ້ເປັນຈອມຄົນຈຳນວນຫຼາຍພາກັນປາຖະໜາ
ທ່ານຈະກ່າວທິດຖິ ສີນ ຂໍ້ວັດປະຕິບັດ ຊີວິດ
ແລະການອຸບັດຂຶ້ນໃນພົບວ່າເປັນແນວໃດ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມາຄັນທິຍະ)

[໗໕໐] ການຕົກລົງໃຈໃນທຳທັງຫຼາຍແລ້ວຖືໝັ້ນວ່າ
ເຮົາກ່າວສິ່ງນີ້ ດັ່ງນີ້ ຍ່ອມບໍ່ມີແກ່ເຮົາ
ເຮົາເຫັນໂທດໃນທິດຖິທັງຫຼາຍ ຈຶ່ງບໍ່ຍຶດໝັ້ນ
ເມື່ອຄັດເລືອກ ຈຶ່ງໄດ້ເຫັນຄວາມສະງົບພາຍໃນ

(ມາຄັນທິຍະພາມທູນຖາມດັ່ງນີ້)

[໗໕໑] ທິດຖິເຫຼົ່າໃດທີ່ຕົກລົງໃຈກຳນົດໄວ້ແລ້ວ
ມຸນີບໍ່ຍຶດໝັ້ນທິດຖິເຫຼົ່ານັ້ນແລ
ກ່າວເນື້ອຄວາມໃດວ່າ ຄວາມສະງົບພາຍໃນ
ເນື້ອຄວາມນັ້ນ ນັກປາດທັງຫຼາຍປະກາດໄວ້ແນວໃດນໍ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ ມາຄັນທິຍະ)

[໗໕໒] ນັກປາດບໍ່ກ່າວຄວາມບໍລິສຸດຍ້ອນທິດຖິ

ບໍ່ກ່າວຄວາມມົດຈົດຍ້ອນສຸຕະ
ບໍ່ກ່າວຄວາມມົດຈົດຍ້ອນຍານ
ບໍ່ກ່າວຄວາມມົດຈົດຍ້ອນສີນແລະຂໍ້ວັດປະຕິບັດ
ບຸກຄົນຍ່ອມເຖິງຄວາມສະຫງົບພາຍໃນ ຍ້ອນຄວາມບໍ່ມີທິດຖິ[໑]
ຍ້ອນຄວາມບໍ່ມີສຸຕະ[໒] ຍ້ອນຄວາມບໍ່ມີຍານ[໓]
ຍ້ອນຄວາມບໍ່ມີສີນ[໔] ຍ້ອນຄວາມບໍ່ມີຂໍ້ວັດປະຕິບັດນັ້ນກໍເປັນໄປບໍ່ໄດ້[໕]
ນັກປາດກໍາຈັດຖິ້ມທໍາເຫຼົ່ານີ້ໄດ້ແລ້ວ
ບໍ່ຍຶດໝັ້ນ ເປັນຜູ້ສະຫງົບ ບໍ່ອາໄສແລ້ວ ບໍ່ເພິ່ງຫວັງພົບ

(ມາຄັນທິຍະພາມຂາບທູນດັ່ງນີ້)

[໘໔໓] ຫາກນັກປາດບໍ່ກ່າວຄວາມມົດຈົດຍ້ອນທິດຖິ
ບໍ່ກ່າວຄວາມມົດຈົດຍ້ອນສຸຕະ
ບໍ່ກ່າວຄວາມມົດຈົດຍ້ອນຍານ
ບໍ່ກ່າວຄວາມມົດຈົດຍ້ອນສີນແລະຂໍ້ວັດປະຕິບັດ
ບຸກຄົນຍ່ອມເຖິງຄວາມສະຫງົບພາຍໃນ ຍ້ອນຄວາມບໍ່ມີທິດຖິ
ຍ້ອນຄວາມບໍ່ມີສຸຕະ ຍ້ອນຄວາມບໍ່ມີຍານ
ຍ້ອນຄວາມບໍ່ມີສີນ ຍ້ອນຄວາມບໍ່ມີຂໍ້ວັດປະຕິບັດນັ້ນ ກໍເປັນໄປບໍ່ໄດ້
ຂ້າພະເຈົ້າຈຶ່ງເຂົ້າໃຈທໍາຂອງທ່ານວ່າ ເປັນເລື່ອງງົມງວາຍແນ່ນອນ
ຍ້ອນສະມະນະພາມລາງພວກເຖິງຄວາມມົດຈົດໄດ້ຍ້ອນທິດຖິ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ ມາຄັນທິຍະ)

[໘໔໘] ຍ້ອນອາໄສທິດຖິທັງຫຼາຍທ່ານຈຶ່ງຖາມເນືອງ ໆ
ໄດ້ມາເຖິງຄວາມລຸ້ມຫຼົງໃນທິດຖິທັງຫຼາຍທີ່ທ່ານຖືໝັ້ນໄວ້ແລ້ວ
ແລະທ່ານກໍບໍ່ໄດ້ເຫັນສັນຍາແມ່ນນ້ອຍໜຶ່ງຈາກທໍານີ້
ຍ້ອນແນວນັ້ນ ທ່ານຈຶ່ງປະສົບແຕ່ຄວາມງົມງວາຍ

[໘໔໙] ຜູ້ໃດສໍາຄັນວ່າ ເຮົາສະເໝີເຂົາ ເລີດກວ່າເຂົາ ຫຼືຕໍ່າຕ້ອຍກວ່າເຂົາ
ຜູ້ນັ້ນເພິ່ງຕ້ອງຜິດຖຽງກັນດ້ວຍຄວາມຖືໂຕນັ້ນ
ບຸກຄົນບໍ່ຫວັ່ນໄຫວ ຍ້ອນຄວາມຖືໂຕ ໓ ຢ່າງ
ຄວາມສໍາຄັນວ່າ ເຮົາສະເໝີເຂົາ ເລີດກວ່າເຂົາ (ຫຼືຕໍ່າຕ້ອຍກວ່າເຂົາ)
ຈຶ່ງບໍ່ມີແກ່ບຸກຄົນນັ້ນ

[໗໕໐] ບຸກຄົນຜູ້ເປັນພາມນັ້ນ ເພິ່ງກ່າວອັນໃດວ່າ ຈິງ
ຫຼືບຸກຄົນຜູ້ເປັນພາມນັ້ນເພິ່ງໂຕ້ຖຽງວ່າ ຕົວະ ດ້ວຍເຫດອັນໃດ
ຄວາມສຳຄັນວ່າ ເຮົາສະເໝີເຂົາ ເຮົາເລີດກວ່າເຂົາ (ຫຼືຕໍ່າຕ້ອຍກວ່າເຂົາ)
ຍ່ອມບໍ່ມີໃນພຣະອະຣະຫັນໃດ
ພຣະອະຣະຫັນນັ້ນເພິ່ງຕອບໂຕ້ວາທະດ້ວຍເຫດອັນໃດນໍ

[໗໕໑] ບຸກຄົນລະບ່ອນອາໄສແລ້ວ ບໍ່ທ່ຽວຊ່ານໄປຫາບ່ອນອາໄສ
ມຸນີບໍ່ທຳຄວາມເຍື່ອໃຍໃນກາມ ວ່າງຈາກກາມທັງຫຼາຍ
ບໍ່ມຸ້ງໝາຍອັດຕະພາບຕໍ່ໄປ ບໍ່ເພິ່ງກ່າວຄຳເວົ້າຂັດແຍ່ງກັນ

[໗໕໒] ບຸກຄົນຜູ້ເປັນນາຄະ ສະຫງັດຈາກທິດຖິເຫຼົ່າໃດ
ເພິ່ງທ່ຽວໄປໃນໂລກ ບໍ່ເພິ່ງເວົ້າຈາຍຶດຖືທິດຖິເຫຼົ່ານັ້ນ
ດອກບົວກ້ານມີໜາມເກີດໃນນ້ຳ
ບໍ່ເປິເປື້ອນດ້ວຍນ້ຳແລະໂຄນຕົມ ສັນໃດ
ມຸນີຜູ້ກ່າວເລື້ອງຄວາມສະງົບ ກໍບໍ່ຍິນດີ
ບໍ່ເປິເປື້ອນໃນກາມແລະໂລກ ສັນນັ້ນ

[໗໕໓] ມຸນີຜູ້ຈົບເວດນັ້ນ ຍ່ອມບໍ່ໄປນຳທິດຖິ
ບໍ່ເຖິງຄວາມຖືໂຕດ້ວຍອາລົມທີ່ຮັບຮູ້
ມຸນີນັ້ນຜູ້ບໍ່ມີຕັນຫາແລະທິດຖິນັ້ນ ບໍ່ຖືກກຳແລະສຸຕະນຳໄປ
ມຸນີນັ້ນບໍ່ຖືກຕັນຫາແລະທິດຖິນຳເຂົ້າໄປໃນບ່ອນອາໄສທັງຫຼາຍ

[໗໕໔] ມຸນີຜູ້ເວັ້ນຈາກສັນຍາແລ້ວ ຍ່ອມບໍ່ມີກິເລດເຄື່ອງຮ້ອຍຮັດ
ມຸນີຜູ້ລຸດພົ້ນດ້ວຍປັນຍາແລ້ວ ຍ່ອມບໍ່ມີຄວາມລຸ້ມຫຼົງ
ຊົນເຫຼົ່າໃດຍັງຍຶດຖືສັນຍາແລະທິດຖິ
ຊົນເຫຼົ່ານັ້ນຍ່ອມທ່ຽວກະທົບກັນໃນໂລກ

**ມາຄັນທິຍະສູດທີ ໙ ຈົບ**

## ໑໐. ປຸຣາເພທະສູດ[1]

## ວ່າດ້ວຍກ່ອນການດັບຂັນທະປະຣິນິບພານ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໗໕໕] ບຸກຄົນມີທັດສະນະ[2]ແນວໃດ ມີສີນ[3]ແນວໃດ
ຈຶ່ງຮຽກວ່າ ເປັນຜູ້ສະງົບ[4]ແລ້ວ

ຂ້າແດ່ພຣະໂຄຕະມະ ຂ້າພຣະອົງທູນຖາມແລ້ວ
ຂໍພຣະອົງໂຜດຕັດບອກນໍຣະຊົນຜູ້ສູງສຸດນັ້ນແກ່ຂ້າພຣະອົງເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໗໕໖] ກ່ອນດັບຂັນທະປະຣິນິບພານ ພຣະອະຣະຫັນເປັນຜູ້ຄາຍຕັນຫາ
ບໍ່ຕິດຢູ່ກັບຄວາມເພີດເພີນທີ່ມີຢູ່ໃນສ່ວນເບື້ອງຕົ້ນ
ໃຜ ໆ ກໍານົດບໍ່ໄດ້ໃນສ່ວນທ່າມກາງ
ພຣະອະຣະຫັນນັ້ນບໍ່ໄດ້ມຸ້ງຫວັງເຖິງຕັນຫາແລະທິດຖິ (ໃນສ່ວນເບື້ອງປາຍ)

[໗໕໗] ບຸກຄົນຜູ້ບໍ່ໂກດ ບໍ່ສະດຸ້ງ ບໍ່ໂອ້ອວດ
ບໍ່ຄະນອງ ເວົ້າດ້ວຍປັນຍາ ບໍ່ຟຸ້ງຊ່ານ
ເປັນຜູ້ສັງລວມວາຈານັ້ນແລ ຊື່ວ່າ ເປັນມຸນີ

[໗໕໘] ບຸກຄົນຜູ້ບໍ່ມີຕັນຫາເຄື່ອງໝ່ຽວຈ່ອງໃນອະນາຄົດ
ບໍ່ເສົ້າໂສກເຖິງສິ່ງທີ່ລ່ວງໄປແລ້ວ
ຜູ້ເຫັນວິເວກໃນຜັດສະທັງຫຼາຍ
ຍ່ອມບໍ່ຖືກນໍາໄປໃນທິດຖິທັງຫຼາຍ

[໗໕໙] ບຸກຄົນນັ້ນເປັນຜູ້ຫຼີບຫຼີກ
ບໍ່ຫຼອກລວງ ບໍ່ທະເຍີທະຍານ
ບໍ່ຂີ້ຖີ່ ບໍ່ຄະນອງ ບໍ່ເປັນທີ່ໜ້າລັງກຽດ
ແລະບໍ່ປະກອບໃນຄວາມເປັນຜູ້ມີວາຈາສັບສໍ່

[໗໖໐] ບຸກຄົນຜູ້ບໍ່ຍິນດີໃນສິ່ງທີ່ໜ້າຍິນດີ
ບໍ່ປະກອບໃນຄວາມດູໝິ່ນ
ລະອຽດອ່ອນ ມີປະຕິພານ
ບໍ່ຕ້ອງເຊື່ອໃຜ ແລະບໍ່ຕ້ອງຄາຍກໍາໜັດ

[໗໖໑] ບຸກຄົນບໍ່ສຶກສາຍ້ອນຢາກໄດ້ລາບ
ບໍ່ໂກດຍ້ອນບໍ່ໄດ້ລາບ
ບໍ່ເດືອດດານແລະບໍ່ຍິນດີໃນຣົດຍ້ອນຕັນຫາ

[໗໖໒] ບຸກຄົນເປັນຜູ້ວາງເສີຍ ມີສະຕິທຸກເມື່ອ
ບໍ່ສໍາຄັນວ່າສະເໝີເຂົາ ບໍ່ສໍາຄັນວ່າເລີດກວ່າເຂົາ

ບໍ່ສຳຄັນວ່າຕ່ຳຕ້ອຍກວ່າເຂົາ ໃນໂລກ
ກິເລດໜາຍ່ອມບໍ່ມີແກ່ບຸກຄົນນັ້ນ

[໗໙໓] ບຸກຄົນໃດບໍ່ມີບ່ອນອາໄສ
ບໍ່ມີຕັນຫາໃນພົບຫຼືໃນວິພົບ[໑]
ບຸກຄົນນັ້ນຮູ້ທຳແລ້ວບໍ່ຕ້ອງອາໄສ

[໗໙໔] ເຮົາຮຽກບຸກຄົນນັ້ນຜູ້ບໍ່ມຸ້ງຫວັງໃນກາມທັງຫຼາຍວ່າ
ເປັນຜູ້ເຂົ້າໄປສະງົບ ບຸກຄົນນັ້ນບໍ່ມີກິເລດເຄື່ອງຮ້ອຍຮັດ
ຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາ ໄດ້ແລ້ວ

[໗໙໕] ບຸກຄົນນັ້ນບໍ່ມີບຸດ ສັດລ້ຽງ ນາ ໄຮ່ ແລະທີ່ດິນ
ທິດຖິວ່າ ມີອັດຕາ ຫຼືທິດຖິວ່າ ບໍ່ມີອັດຕາ ຫາບໍ່ໄດ້ໃນບຸກຄົນນັ້ນ[໒]

[໗໙໖] ເຫຼົ່າປຸຖຸຊົນ ຫຼືສະມະນະພາມ
ເພິ່ງກ່າວຫາບຸກຄົນນັ້ນດ້ວຍໂທດ[໓]ໃດ
ໂທດນັ້ນ ບໍ່ເຊີດຊູບຸກຄົນນັ້ນເລີຍ
ຍ້ອນແນວນັ້ນ ບຸກຄົນນັ້ນຈຶ່ງບໍ່ຫວັ່ນໄຫວ ຍ້ອນວາທະທັງຫຼາຍ

[໗໙໗] ບຸກຄົນຜູ້ເປັນມຸນີ ເປັນຜູ້ຄາຍຄວາມຍິນດີ ບໍ່ຂີ້ຖີ່
ຍ່ອມບໍ່ກ່າວໃນເລື້ອງເລີດກວ່າເຂົາ
ບໍ່ກ່າວໃນເລື້ອງສະເໝີເຂົາ ບໍ່ກ່າວໃນເລື້ອງຕ່ຳຕ້ອຍກວ່າເຂົາ
ເປັນຜູ້ບໍ່ມີຄວາມກຳນົດ ຍ່ອມບໍ່ເຖິງຄວາມກຳນົດ[໔]

[໗໙໘] ບຸກຄົນໃດບໍ່ມີຄວາມຖືວ່າເປັນຂອງຕົນໃນໂລກ
ເມື່ອບໍ່ມີຄວາມຖືວ່າເປັນຂອງຕົນ ຍ່ອມບໍ່ເສົ້າໂສກ
ບໍ່ເຖິງຄວາມລຳອຽງໃນທຳທັງຫຼາຍ
ບຸກຄົນນັ້ນແລ ຮຽກວ່າ ຜູ້ສະງົບ

**ປຸຣາເພທະສູດທີ ໑໐ ຈົບ**

## ໑໑. ກະລະຫະວິວາທະສູດ[໑]

## ວ່າດ້ວຍການຜິດກັນຖຽງກັນ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໗໙໙] ການຜິດ ການຖຽງ ຄວາມຮ່ຳໄຮ
ຄວາມໂສກເສົ້າ ຄວາມຂີ້ຖີ່ ຄວາມຖືໂຕ

ຄວາມດູໝິ່ນ ແລະວາຈາສັບສໍ່ ມີມາຈາກໃສ
ກິເລດເຫຼົ່ານັ້ນມີມາຈາກໃສ
ຂໍເຊີນພຣະອົງໂຜດຕັດບອກເຫດນັ້ນ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[ຖາ໐] ການຜິດ ການຖຽງ ຄວາມຮ່ຳໄຮ
ຄວາມໂສກເສົ້າ ຄວາມຂີ້ຖີ່ ຄວາມຖືໂຕ
ຄວາມດູໝິ່ນ ແລະວາຈາສັບສໍ່ ມີມາຈາກສິ່ງເປັນທີ່ຮັກ໌
ການຜິດ ການຖຽງ ປະກອບໃນຄວາມຂີ້ຖີ່
ມີມາຈາກສິ່ງເປັນທີ່ຮັກ
ເມື່ອການຜິດຖຽງເກີດຂຶ້ນແລ້ວ ກໍມີວາຈາສັບສໍ່ເກີດຂຶ້ນ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[ຖາ໑] ສິ່ງເປັນທີ່ຮັກໃນໂລກມີອັນໃດເປັນຕົ້ນເຫດ
ແລະຊົນເຫຼົ່າໃດທ່ອງທ່ຽວໄປໃນໂລກຍ້ອນຄວາມໂລບ
ຄວາມໂລບຂອງຊົນເຫຼົ່ານັ້ນ ມີອັນໃດເປັນຕົ້ນເຫດ
ຄວາມຫວັງແລະຄວາມສຳເລັດຫວັງໃດ ຈະມີແກ່ນໍຣະຊົນໃນພົບໜ້າ
ຄວາມຫວັງແລະຄວາມສຳເລັດຫວັງນັ້ນ ມີອັນໃດເປັນຕົ້ນເຫດ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[ຖາ໔] ສິ່ງເປັນທີ່ຮັກໃນໂລກມີຄວາມພໍໃຈເປັນຕົ້ນເຫດ
ແລະຊົນເຫຼົ່າໃດທ່ອງທ່ຽວໄປໃນໂລກຍ້ອນຄວາມໂລບ
ຄວາມໂລບຂອງຊົນເຫຼົ່ານັ້ນມີຄວາມພໍໃຈເປັນຕົ້ນເຫດ
ຄວາມຫວັງແລະຄວາມສຳເລັດຫວັງໃດ ຈະມີແກ່ນໍຣະຊົນໃນພົບໜ້າ
ຄວາມຫວັງແລະຄວາມສຳເລັດຫວັງຂອງນໍຣະຊົນນັ້ນ
ມີຄວາມພໍໃຈນີ້ເປັນຕົ້ນເຫດ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[ຖາ໙] ສັນທະໃນໂລກມີຕົ້ນເຫດມາຈາກໃສ
ແລະຄວາມຕັດສິນໃຈມີມາຈາກໃສ
ອັນໜຶ່ງ ຄວາມໂກດ ຄວາມເປັນຄົນເວົ້າຕົວະ

ແລະຄວາມສົງໄສ ມີມາຈາກອັນໃດ
ແລະທຳເຫຼົ່າໃດພຣະສະມະນະຕັດໄວ້ແລ້ວ
ທຳເຫຼົ່ານັ້ນມີມາຈາກອັນໃດ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໘໗໔] ຊົນທັງຫຼາຍໃນໂລກເວົ້າເຖິງສິ່ງໃດວ່າ ໜ້າດີໃຈ ໜ້າເສຍໃຈ
ສັນທະກໍຈະມີຂຶ້ນຍ້ອນອາໄສສິ່ງນັ້ນ
ຊົນໃນໂລກແນມເຫັນຄວາມເສື່ອມແລະຄວາມຈະເລີນໃນຮູບທັງຫຼາຍແລ້ວ
ຍ່ອມເຮັດການຕັດສິນໃຈ

[໘໗໕] ທຳແມ່ນເຫຼົ່ານີ້ ຄື ຄວາມໂກດ
ຄວາມເປັນຄົນເວົ້າຕົວະ ແລະຄວາມສົງໄສ
ຍ່ອມມີໃນເມື່ອຄວາມດີໃຈແລະຄວາມເສຍໃຈທັງສອງມີຢູ່
ບຸກຄົນຜູ້ມີຄວາມສົງໄສເພິ່ງສຶກສາເພື່ອທາງແຫ່ງຍານ[9]
ແລະທຳເຫຼົ່າໃດພຣະສະມະນະຊົງຮູ້ແລ້ວຕັດໄວ້
ທຳເຫຼົ່ານັ້ນ ເມື່ອຄວາມດີໃຈແລະຄວາມເສຍໃຈທັງສອງມີຢູ່ກໍມີມາ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໘໗໖] ຄວາມດີໃຈແລະຄວາມເສຍໃຈມີຕົ້ນເຫດມາຈາກໃສ
ເມື່ອອັນໃດບໍ່ມີ ຄວາມດີໃຈແລະຄວາມເສຍໃຈເຫຼົ່ານັ້ນຈຶ່ງບໍ່ມີ
ຂໍພຣະອົງຈົ່ງຕັດບອກເລື້ອງຄວາມບໍ່ມີແລະຄວາມມີວ່າ
ມີຕົ້ນເຫດມາຈາກສິ່ງໃດແກ່ຂ້າພຣະອົງ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໘໗໗] ຄວາມດີໃຈແລະຄວາມເສຍໃຈມີຕົ້ນເຫດມາຈາກຜັດສະ
ເມື່ອຜັດສະບໍ່ມີ ຄວາມດີໃຈແລະຄວາມເສຍໃຈເຫຼົ່ານີ້ຈຶ່ງບໍ່ມີ
ເຮົາຂໍບອກເລື້ອງຄືຄວາມບໍ່ມີແລະຄວາມມີນີ້ວ່າ
ມີຕົ້ນເຫດມາຈາກຜັດສະແກ່ທ່ານ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໘໗໘] ຜັດສະໃນໂລກມີຕົ້ນເຫດມາຈາກໃສ

ແລະຄວາມຍຶດຖືມີມາຈາກໄສ
ເມື່ອອັນໃດບໍ່ມີ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ
ເມື່ອອັນໃດບໍ່ມີ ຜັດສະຈຶ່ງບໍ່ຖືກຕ້ອງ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໘໗໙] ຍ້ອນອາໄສນາມແລະຮູບ ຜັດສະຈຶ່ງເກີດຂຶ້ນ
ຄວາມຍຶດຖືມີຕົ້ນເຫດມາຈາກຄວາມປາຖະໜາ
ເມື່ອຄວາມປາຖະໜາບໍ່ມີ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ
ເມື່ອຮູບບໍ່ມີ ຜັດສະຈຶ່ງບໍ່ຖືກຕ້ອງ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໘໘໐] ເມື່ອບຸກຄົນດຳເນີນແນວໃດ ຮູບຈຶ່ງບໍ່ມີ
ສຸກແລະທຸກຈະບໍ່ມີໄດ້ແນວໃດ
ສຸກແລະທຸກຍ່ອມບໍ່ມີໂດຍວິທີການໃດ
ຂໍພຣະອົງໂຜດຕັດບອກວິທີການນັ້ນແກ່ຂ້າພຣະອົງ
ຂ້າພຣະອົງມີຄວາມຕັ້ງໃຈວ່າ ຈະຮູ້ວິທີການນັ້ນ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໘໘໑] ບຸກຄົນບໍ່ເປັນຜູ້ມີສັນຍາໂດຍສັນຍາປົກກະຕິ
ບໍ່ເປັນຜູ້ມີສັນຍາໂດຍສັນຍາຜິດປົກກະຕິ
ເປັນຜູ້ບໍ່ມີສັນຍາກໍບໍ່ແມ່ນ ປາສະຈາກສັນຍາກໍບໍ່ແມ່ນ
ເມື່ອບຸກຄົນດຳເນີນແນວນີ້ ຮູບຈຶ່ງບໍ່ມີ
ຍ້ອນສ່ວນແຫ່ງທຳເປັນເຄື່ອງລ້າຊ້າມີຕົ້ນເຫດມາຈາກສັນຍາ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໘໘໔] ຂ້າພຣະອົງໄດ້ທູນຖາມທຳໃດແລ້ວ
ພຣະອົງກໍໄດ້ຕັດຕອບທຳນັ້ນແກ່ຂ້າພຣະອົງແລ້ວ
ຂ້າພຣະອົງຂໍທູນຖາມທຳອື່ນອີກ
ຂໍເຊີນພຣະອົງໂຜດຕັດບອກທຳນັ້ນດ້ວຍເທີ້ນ
ສະມະນະພາມລາງພວກອ້າງຕົນວ່າເປັນບັນດິດໃນໂລກນີ້
ພາກັນກ່າວຄວາມບໍລິສຸດຈິດຂອງຍັກ[9]

ດ້ວຍອະຣູບປະສະມາບັດທີ່ນັ້ນຫຼືບໍວ່າ ເປັນທຳອັນເລີດ
ຫຼືວ່າສະມະນະພາມລາງພວກ ກ່າວເຖິງຄວາມມົດຈົດແນວອື່ນວ່າ
ຍິ່ງມກວ່າອະຣູບປະສະມາບັດນີ້

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໗໗໓] ສະມະນະພາມລາງພວກອ້າງຕົນວ່າ ເປັນບັນດິດໃນໂລກນີ້
ພາກັນກ່າວຄວາມມົດຈົດຂອງຍັກ
ດ້ວຍອະຣູບປະສະມາບັດທີ່ນັ້ນວ່າ ເປັນທຳອັນເລີດ
ບັນດາສະມະນະພາມເຫຼົ່ານັ້ນ
ສະມະນະພາມອີກພວກໜຶ່ງກໍອ້າງຕົນວ່າ ເປັນຜູ້ສະຫຼາດ
ພາກັນກ່າວຄວາມສະງົບໃນຄວາມບໍ່ມີອັນໃດເຫຼືອ

[໗໗໔] ມຸນີຜູ້ມີປັນຍາເຄື່ອງພິຈາລະນານັ້ນ ຮູ້ຈັກສະມະນະພາມ
ຜູ້ເປັນເຈົ້າລັດທິເຫຼົ່ານີ້ວ່າ ເປັນຜູ້ເຂົ້າໄປອາໄສທິດຖິ
ແລະຮູ້ຈັກທິດຖິເປັນບ່ອນອາໄສ
ນັກປາດເມື່ອຮູ້ຈັກແລ້ວ ກໍລຸດພົ້ນບໍ່ເຖິງການຜິດຖຽງ
ບໍ່ກັບມາໃນພົບນ້ອຍພົບໃຫຍ່

**ກະລະຫະວິວາທະສູດທີ ໑໑ ຈົບ**

## ໑໒. ຈູລະວິຍູຫະສູດ[1]

## ວ່າດ້ວຍການຜິດຖຽງກັນຍ້ອນທິດຖິສູດນ້ອຍ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໗໗໕] ສະມະນະພາມເຈົ້າລັດທິລາງພວກ
ຍຶດຖືຢູ່ສະເພາະທິດຖິຂອງຕົນ ໆ
ຖືແລ້ວກໍອ້າງໂຕວ່າ ເປັນຄົນສະຫຼາດ ເວົ້າກັນໄປຕ່າງ ໆ ວ່າ
ບຸກຄົນໃດຮູ້ແນວນີ້ ບຸກຄົນນັ້ນຊື່ວ່າ ຮູ້ທຳແລ້ວ
ບຸກຄົນໃດຄັດຄ້ານທຳນີ້ ບຸກຄົນນັ້ນຊື່ວ່າ ຍັງບໍ່ສຳເລັດກິດ

[໗໗໖] ສະມະນະພາມເຫຼົ່ານັ້ນຖືແນວນີ້ ແລ້ວກໍພາກັນຜິດຖຽງ
ແລະກ່າວວ່າ ຄົນອື່ນເປັນຄົນພານ ບໍ່ສະຫຼາດ

ວາທະຂອງສະມະນະພາມເຫຼົ່ານີ້
ວາທະໃດເປັນເລື່ອງຈິງກັນບໍ
ຍ້ອນສະມະນະພາມເຫຼົ່ານີ້ທັງໝົດ
ຕ່າງກໍອ້າງໂຕວ່າ ເປັນຄົນສະຫຼາດ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໗໗໗] ຄົນພານບໍ່ຍອມຮັບທຳຂອງຜູ້ອື່ນເລີຍ
ເປັນຄົນຕໍ່າຊາມ ມີປັນຍາຊາມ
ສະມະນະພາມທັງໝົດນັ້ນແລເປັນຄົນພານ ມີປັນຍາຊາມ
ສະມະນະພາມເຫຼົ່ານີ້ທັງໝົດນັ້ນແລຍຶດຖືທິດຖິຢູ່

[໗໗໘] ຖ້າພວກສະມະນະພາມບໍ່ຜ່ອງແຜ້ວຍ້ອນທິດຖິຂອງຕົນ[๑]
ເປັນຜູ້ມີປັນຍາມົດຈົດດີ ສະຫຼາດ ມີຄວາມຮູ້ແທ້ແລ້ວ
ບັນດາສະມະນະພາມເຫຼົ່ານັ້ນ ກໍບໍ່ມີໃຜເສື່ອມປັນຍາ
ຍ້ອນທິດຖິຂອງສະມະນະພາມແມ່ນເຫຼົ່ານັ້ນ ຖືກັນມາແນວນັ້ນ

[໗໗໙] ຄົນ ໔ ຈຳພວກກ່າວທິດຖິໃດຕໍ່ກັນວ່າ ເປັນຄົນພານ
ເຮົາບໍ່ກ່າວທິດຖິນັ້ນວ່າ ຈິງ
ສະມະນະພາມພາກັນປະກາດທິດຖິຂອງຕົນ ໆ ວ່າ ຈິງ
ຍ້ອນແນວນັ້ນ ຈຶ່ງພາກັນໃສ່ໄຟຜູ້ອື່ນວ່າ ເປັນຄົນພານ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໗໙໐] ສະມະນະພາມລາງພວກກ່າວທຳໃດວ່າຈິງ ວ່າແທ້
ສະມະນະພາມພວກອື່ນກໍພາກັນກ່າວທຳນັ້ນວ່າເປົ່າ ວ່າຕົວະ
ສະມະນະພາມເຫຼົ່ານັ້ນຕ່າງພາກັນຖືໝັ້ນແມ່ນແນວນີ້ແລ້ວຜິດຖຽງກັນ
ຍ້ອນເຫດໃດ ສະມະນະພາມຈຶ່ງບໍ່ເວົ້າແນວດຽວກັນ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໗໙໑] ໝູ່ຊົນຮູ້ແຈ້ງສັດຈະໃດບໍ່ເພິ່ງຜິດຖຽງກັນ
ສັດຈະນັ້ນມີແນວດຽວ໌ທີ່ນັ້ນ ບໍ່ມີແນວທີ ໔
ສະມະນະພາມເຫຼົ່ານັ້ນ ພາກັນອວດສັດຈະຕ່າງ ໆ ກັນໄປເອງ
ຍ້ອນແນວນັ້ນ ສະມະນະພາມຈຶ່ງບໍ່ເວົ້າແນວດຽວກັນ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໗໙໔] ຍ້ອນເຫດໃດນໍ ສະມະນະພາມຈຶ່ງເວົ້າສັດຈະໄປຕ່າງ ໆ
ອ້າງຕົນວ່າ ເປັນຄົນສະຫຼາດເວົ້າພໍ່າກັນໄປ
ສັດຈະທີ່ສະມະນະພາມເຫຼົ່ານັ້ນຮ່ຳຮຽນມາ
ມີຫຼາຍແນວຕ່າງ ໆ ກັນບໍ
ຫຼືວ່າສະມະນະພາມເຫຼົ່ານັ້ນພາກັນນຶກຄິດເອົາເອງ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໗໙໓] ບໍ່ໄດ້ມີສັດຈະຫຼາຍແນວຕ່າງ ໆ ກັນເລີຍ
ເວັ້ນແຕ່ສັດຈະທີ່ແນ່ນອນດ້ວຍສັນຍາໃນໂລກ
ແຕ່ສະມະນະພາມທັງຫຼາຍ
ພາກັນກຳນົດຄວາມນຶກໃນທິດຖິທັງຫຼາຍໄປເອງ
ແລ້ວກ່າວທຳເປັນ ໔ ຢ່າງວ່າ
ຄຳຂອງເຮົາຈິງ ຄຳຂອງທ່ານຕົວະ

[໗໙໔] ເຈົ້າລັດທິອາໄສທຳເຫຼົ່ານີ້ ຄື
ຮູບທີ່ເຫັນ ສຽງທີ່ໄດ້ຍິນ ສິນ ຂໍ້ວັດປະຕິບັດ ແລະອາລົມທີ່ຮັບຮູ້
ແລ້ວສະແດງອາການດູໝິ່ນ ແລະດຳລົງຢູ່ໃນທິດຖິທີ່ຕົກລົງໃຈ
ແລ້ວກໍແຈ່ມໃສກ່າວວ່າ ຄົນອື່ນເປັນຄົນພານ ບໍ່ສະຫຼາດ

[໗໙໕] ເຈົ້າລັດທິໃສ່ໄຟບຸກຄົນອື່ນວ່າ ເປັນຄົນພານ ຍ້ອນເຫດໃດ
ກໍກ່າວເຖິງຕົນເອງວ່າ ເປັນຄົນສະຫຼາດ ຍ້ອນເຫດນັ້ນ
ເຈົ້າລັດທິນັ້ນອວດອ້າງຕົນເອງວ່າ ເປັນຄົນສະຫຼາດ
ຍ່ອມດູໝິ່ນບຸກຄົນອື່ນແລະກ່າວເຊັ່ນນັ້ນຄືກັນ

[໗໙໖] ເຈົ້າລັດທິນັ້ນເປັນຜູ້ພຽບພ້ອມດ້ວຍອະຕິສານທິດຖິ¹
ເມົາດ້ວຍຄວາມຖືໂຕ ມີຄວາມຖືໂຕຈັດ ອະພິເສກຕົນເອງດ້ວຍໃຈ
ຍ້ອນທິດຖິນັ້ນເຈົ້າລັດທິຖືກັນມາແນວນັ້ນ

[໗໙໗] ອັນໜຶ່ງ ຫາກບຸກຄົນເປັນຜູ້ຊົ່ວຊາມຍ້ອນວາຈາຂອງຜູ້ອື່ນແລ້ວ
ເຂົາກໍເປັນຜູ້ມີປັນຍາຊາມພ້ອມກັບຜູ້ນັ້ນ
ແລະຖ້າຜູ້ຮຽນຈົບພຣະເວດເອງ ເປັນນັກປາດໄດ້ແລ້ວ

ບັນດາສະມະນະ ກໍບໍ່ມີໃຜເປັນຄົນພານ

[໗໙໗] ຊົນເຫຼົ່າໃດກ່າວສັນເສີນທຳອື່ນນອກຈາກທຳນີ້
ຊົນເຫຼົ່ານັ້ນເປັນຜູ້ພາດທາງແຫ່ງຄວາມບໍລິສຸດ ເປັນຜູ້ບໍ່ບໍລິບູນ
ເດຍຣະຖີພາກັນກ່າວທິດຖິຫຼາຍແມ່ນແນວນີ້
ຍ້ອນພວກເຂົາເປັນຜູ້ຍິນດີຍິ່ງດ້ວຍຄວາມຍິນດີໃນທິດຖິຂອງຕົນ

[໗໙໙] ພວກເດຍຣະຖີພາກັນກ່າວຄວາມບໍລິສຸດວ່າມີຢູ່ໃນທຳນີ້ທໍ່ນັ້ນ
ບໍ່ກ່າວຄວາມບໍລິສຸດໃນທຳເຫຼົ່າອື່ນ
ພວກເດຍຣະຖີຕັ້ງຢູ່ໃນທິດຖິຫຼາຍແມ່ນແນວນີ້
ຕ່າງກ່າວຢັ້ງຢືນໃນທຳອັນເປັນແນວທາງຂອງຕົນນັ້ນ

[໙໐໐] ອັນໜຶ່ງ ເຈົ້າລັດທິກ່າວຢັ້ງຢືນໃນແນວທາງຂອງຕົນ
ໃສ່ໄຟຜູ້ອື່ນວ່າ ເປັນຄົນພານ ຍ້ອນທິດຖິນີ້
ເຈົ້າລັດທິນັ້ນ ກ່າວເຖິງຜູ້ອື່ນວ່າ ເປັນຄົນພານ
ມີຄວາມບໍ່ບໍລິສຸດເປັນທຳມະດາ
ເພິ່ງນຳຄວາມມຸ້ງຮ້າຍມາເອງຢ່າງແນ່ນອນ

[໙໐໑] ເຈົ້າລັດທິນັ້ນຕັ້ງຢູ່ໃນທິດຖິທີ່ຕົກລົງໃຈແລະນັບຖືເອງແລ້ວ
ກໍເຖິງການຜິດຖຽງໃນການທາງໜ້າໃນໂລກ
ຄົນທີ່ເກີດມາລະທິດຖິທີ່ຕົກລົງໃຈທັງມວນໄດ້
ຍ່ອມບໍ່ກໍ່ການມຸ້ງຮ້າຍໃນໂລກ

**ຈູລະວິຍູຫະສູດທີ ໑໘ ຈົບ**

## ໑໓. ມະຫາວິຍູຫະສູດ[1]

## ວ່າດ້ວຍການຜິດຖຽງກັນຍ້ອນທິດຖິສູດໃຫຍ່

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໙໐໘] ສະມະນະພາມພວກໃດພວກໜຶ່ງເຫຼົ່ານີ້
ຢຶດຖືທິດຖິຢູ່ ພາກັນກ່າວອ້າງວ່າ ນີ້ທໍ່ນັ້ນຈິງ
ສະມະນະພາມເຫຼົ່ານັ້ນທຸກພວກນັ້ນແລຈະຖືກນິນທາ
ຫຼືວ່າຈະໄດ້ຮັບຄວາມສັນເສີນຍ້ອນທິດຖິນັ້ນ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໙໐໓] ຜົນແຫ່ງວາທະນີ້ໜ້ອຍແທ້ ບໍ່ພໍເພື່ອຄວາມສະງົບ
ເຮົາກ່າວຜົນແຫ່ງການຜິດຖຽງເປັນ ໒ ຢ່າງ[6]
ບຸກຄົນເຫັນໂທດແມ່ນນີ້ແລ້ວ
ແນມເຫັນພູມ (ເຫດ)ແຫ່ງການບໍ່ຜິດຖຽງ[2]ວ່າ ກະເສມ
ບໍ່ເພິ່ງຜິດຖຽງກັນ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໙໐໔] ທິດຖິສົມມຸດ[6]ເຫຼົ່ານີ້ແນວໃດແນວໜຶ່ງເກີດຈາກປຸຖຸຊົນ
ບຸກຄົນຜູ້ມີຄວາມຮູ້ຍ່ອມບໍ່ເຂົ້າເຖິງທິດຖິສົມມຸດເຫຼົ່ານີ້ທຸກຢ່າງ
ບຸກຄົນຜູ້ບໍ່ມີກິເລດເປັນເຫດເຂົ້າເຖິງນັ້ນ
ບໍ່ທຳຄວາມພໍໃຈໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ
ເພິ່ງເຖິງສິ່ງທີ່ຄວນເຂົ້າເຖິງອັນໃດນໍ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໙໐໕] ສະມະນະພາມຜູ້ກ່າວອ້າງສິນວ່າ ສູງສຸດ
ສະມາທານຂໍ້ວັດປະຕິບັດແລ້ວ ດຳລົງຢູ່
ໄດ້ກ່າວຄວາມມົດຈົດດ້ວຍຄວາມສັງລວມວ່າ
ພວກເຮົາສຶກສາໃນທິດຖິນີ້ແລ ແລະສຶກສາຄວາມມົດຈົດແຫ່ງຂໍ້ວັດປະຕິບັດນັ້ນ
ສະມະນະພາມເຫຼົ່ານັ້ນອ້າງຕົນວ່າ ເປັນຄົນສະຫຼາດ
ຍ່ອມເປັນຜູ້ຖືກນຳເຂົ້າສູ່ພົບ

[໙໐໖] ຖ້າບຸກຄົນເຄື່ອນຈາກສິນແລະຂໍ້ວັດປະຕິບັດ
ພາດກຳແລ້ວກໍຫວັ່ນໄຫວ
ເຂົາຍ່ອມເຝົ້າແຕ່ພໍ່າເພີ້ແລະປາຖະໜາຄວາມມົດຈົດ
ຄືຄົນອອກຈາກເຮືອນຢູ່ຮ່ວມກັບພວກເດີນທາງ
ພັດພາກຈາກພວກ ສັນນັ້ນ

[໙໐໗] ອະຣິຍະສາວົກລະສິນແລະຂໍ້ວັດປະຕິບັດໄດ້ທັງໝົດ
ລະກຳທີ່ມີໂທດແລະກຳທີ່ບໍ່ມີໂທດ[9]ໄດ້
ບໍ່ປາຖະໜາຄວາມມົດຈົດແລະຄວາມບໍ່ມົດຈົດ

ງົດເວັ້ນແລ້ວ ບໍ່ຍຶດໝັ້ນທິດຖິທີ່ມີຢູ່ທັງວໄປ

[໙໐໗] ສະມະນະພາມເຂົ້າໄປອາໄສຕະບະທີ່ຕົນກຽດຊັງນັ້ນ
ເຂົ້າໄປອາໄສຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼືອາລົມທີ່ຮັບຮູ້
ເປັນຜູ້ກ່າວຄວາມມົດຈົດໃນສົງສານທາງໜ້າ
ຍັງບໍ່ຄາຍຕັນຫາໃນພົບນ້ອຍພົບໃຫຍ່
ຈຶ່ງຍັງພ່ຳເວົ້າເຖິງຄວາມມົດຈົດຢູ່

[໙໐໘] ຄວາມພໍໃຈວັດຖຸ ຍ່ອມມີແກ່ຜູ້ກຳລັງປາຖະໜາ
ອັນໜຶ່ງ ຄວາມຫວັ່ນໄຫວ ຍ່ອມມີຍ້ອນວັດຖຸທີ່ກຳນົດແລ້ວ
ຄວາມຕາຍແລະຄວາມເກີດບໍ່ໄດ້ມີແກ່ພິກຂຸໃດໃນທຳວິໄນນີ້
ພິກຂຸນັ້ນເພິ່ງຫວັ່ນໄຫວດ້ວຍເຫດອັນໃດນໍ
ຫຼືຈະເພິ່ງພໍໃຈໃນອັນໃດນໍ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໙໑໐] ສະມະນະພາມລາງພວກກ່າວທຳໃດວ່າ ຍັງມ
ແຕ່ສະມະນະພາມພວກອື່ນກັບກ່າວທຳນັ້ນ ໆ ເອງວ່າ ຊົ່ວ
ວາທະຂອງສະມະນະພາມເຫຼົ່ານີ້ ວາທະໃດຈິງກັນນໍ
ຍ້ອນສະມະນະພາມເຫຼົ່ານີ້ທຸກພວກ
ຕ່າງກ່າວອ້າງຕົນວ່າ ເປັນຄົນສະຫຼາດ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໙໑໑] ອັນໜຶ່ງ ສະມະນະພາມລາງພວກ
ກ່າວທຳຂອງຕົນວ່າ ບໍລິບູນ ແຕ່ກ່າວທຳຂອງຜູ້ອື່ນວ່າ ຊົ່ວ
ພວກສະມະນະພາມຖືໝັ້ນແມ່ນແນວນີ້ແລ້ວ ຍ່ອມຜິດຖຽງກັນ
ຍ້ອນຕ່າງກ່າວທິດຖິສົມມຸດຂອງຕົນ ໆ ວ່າ ຈິງ

[໙໑໒] ຫາກບຸກຄົນເປັນຄົນຊົ່ວຍ້ອນເຫດທີ່ຜູ້ອື່ນເວົ້າຕິຕຽນແລ້ວ
ກໍຈຶ່ງຈະບໍ່ມີໃຜວິເສດໃນທຳທັງຫຼາຍໄດ້ເລີຍ
ຍ້ອນຄົນສ່ວນຫຼາຍ ຕ່າງກ່າວຢັ້ງຢືນໃນແນວທາງຂອງຕົນ
ພາກັນກ່າວເຖິງທຳຂອງຜູ້ອື່ນວ່າ ເປັນສິ່ງຊົ່ວຊາມ

[໙໑໓] ການບູຊາຫຼັກການຂອງຕົນ ເປັນເລື້ອງແທ້ຈິງ

ຄືສະມະນະພາມພາກັນສັນເສີນແນວທາງຂອງຕົນ ສັນນັ້ນ
ການວ່າຮ້າຍທຸກຢ່າງກໍເພິ່ງມີຢູ່ແທ້ຈິງ
ຍ້ອນຄວາມມົດຈົດຂອງສະມະນະພາມເຫຼົ່ານັ້ນ
ເປັນເລື້ອງສະເພາະຕົນທໍ່ນັ້ນ

[໙໑໔] ຍານທີ່ຜູ້ອື່ນເພິ່ງແນະນຳບໍ່ມີແກ່ພາມ
ຄວາມຕົກລົງໃຈແລ້ວຍຶດໝັ້ນໃນທຳທັງຫຼາຍ ກໍບໍ່ມີ
ຍ້ອນແນວນັ້ນ ພາມຈຶ່ງລ່ວງເລີຍການຜິດຖຽງທັງຫຼາຍໄດ້ແລ້ວ
ແທ້ຈິງ ພາມບໍ່ເຫັນທຳອື່ນວ່າ ເປັນຂອງປະເສີດ

[໙໑໕] ສະມະນະພາມລາງພວກເຊື່ອຄວາມມົດຈົດຍ້ອນທິດຖິວ່າ
ເຮົາຮູ້ ເຮົາເຫັນຄວາມມົດຈົດນີ້ວ່າ ມີຈິງ
ຖ້າສະມະນະພາມຜູ້ໜຶ່ງໄດ້ເຫັນແລ້ວ
ຈະມີປະໂຫຍດອັນໃດດ້ວຍການເຫັນນັ້ນແກ່ສະມະນະພາມເຫຼົ່ານັ້ນນໍ
ຍ້ອນພວກສະມະນະພາມແລ່ນເລີຍ (ທາງແຫ່ງຄວາມມົດຈົດ)ແລ້ວ
ຍ່ອມກ່າວຄວາມມົດຈົດດ້ວຍການເຫັນອື່ນ

[໙໑໖] ນໍຣະຊົນເມື່ອເຫັນຍ່ອມເຫັນນາມຮູບ
ຫຼືເມື່ອເຫັນແລ້ວກໍຮູ້ຈັກສະເພາະນາມຮູບເຫຼົ່ານັ້ນທໍ່ນັ້ນ
ນໍຣະຊົນເຫັນນາມຮູບຫຼາຍແດ່ ໜ້ອຍແດ່ໂດຍແທ້
ເຖິງແນວນັ້ນ ຜູ້ສະຫຼາດທັງຫຼາຍກໍບໍ່ກ່າວຄວາມມົດຈົດ
ຍ້ອນການເຫັນນາມຮູບນັ້ນ

[໙໑໗] ນໍຣະຊົນຜູ້ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນ
ບໍ່ແມ່ນຄົນທີ່ໃຜເພິ່ງແນະນຳໄດ້ງ່າຍ
ເປັນຜູ້ເຊີດຊູທິດຖິທີ່ກຳນົດໄວ້ແລ້ວ
ອາໄສສາດສະດາໃດ ກໍກ່າວວ່າສາດສະດານັ້ນດີງາມຍ້ອນທິດຖິນັ້ນ
ນໍຣະຊົນນັ້ນຜູ້ກ່າວຄວາມມົດຈົດໄດ້ເຫັນວ່າແທ້ຈິງໃນທິດຖິນັ້ນ

[໙໑໘] ພາມພິຈາລະນາແລ້ວ ຍ່ອມບໍ່ເຂົ້າເຖິງຄວາມກຳນົດ
ບໍ່ແລ່ນໄປນຳທິດຖິ ທັງບໍ່ຜູກພັນດ້ວຍຕັນຫາຫຼືທິດຖິຍ້ອນຍານ
ພາມນັ້ນເມື່ອຮູ້ແລ້ວກໍວາງເສີຍທິດຖິສົມມຸດທີ່ເກີດຈາກປຸຖຸຊົນ
ແຕ່ສະມະນະພາມເຫຼົ່າອື່ນພາກັນຖືໝັ້ນ

[໙໑໙] ມຸນີກຳຈັດກິເລດເຄື່ອງຮ້ອຍຮັດໃນໂລກນີ້ແລ້ວ
ເມື່ອຄົນທັງຫຼາຍເກີດຜິດຖຽງກັນແລ້ວ
ກໍບໍ່ເຂົ້າໄປເປັນຝັກເປັນຝ່າຍ
ເມື່ອຄົນທັງຫຼາຍບໍ່ສະງົບ ມຸນີນັ້ນເປັນຜູ້ສະງົບ ວາງເສີຍ ບໍ່ຖືໝັ້ນ
ແຕ່ສະມະນະພາມເຫຼົ່າອື່ນພາກັນຖືໝັ້ນ

[໙໘໐] ມຸນີລະອາສະວະເກົ່າ[១]ບໍ່ກໍ່ອາສະວະໃໝ່[២]
ບໍ່ດຳເນີນໄປຕາມຄວາມພໍໃຈ
ທັງບໍ່ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນ
ມຸນີນັ້ນເປັນນັກປາດ ພົ້ນຂາດແລ້ວຈາກທິດຖິທັງຫຼາຍ
ຕິຕຽນຕົນເອງບໍ່ໄດ້ ບໍ່ຕິດຢູ່ໃນໂລກ

[໙໘໑] ມຸນີນັ້ນ ເປັນຜູ້ກຳຈັດເສນາ[៣]ໃນທຳທັງປວງ
ຄືໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼືອາລົມທີ່ຮັບຮູ້ແນວໃດແນວໜຶ່ງ
ມຸນີນັ້ນເປັນຜູ້ປົງພາຣະ[៤]ລົງແລ້ວ ພົ້ນຂາດແລ້ວ
ບໍ່ມີຄວາມກຳນົດ ບໍ່ເຂົ້າໄປຍິນດີ
ບໍ່ມີຄວາມປາຖະໜາ

**ມະຫາວິຍູຫະສູດທີ 1໓ ຈົບ**

## ໑໔. ຕຸວະຕະກະສູດ[១]

## ວ່າດ້ວຍພິກຂຸຜູ້ກຳຈັດບາບທຳຢ່າງທັນທີ

(ພຣະພຸດທະເນຣະມິດທູນຖາມດັ່ງນີ້)

[໙໘໘] ຂ້າພຣະອົງຂໍທູນຖາມພຣະອົງ
ຜູ້ຊົງເປັນເຜົ່າພັນພຣະອາທິດ
ຜູ້ມີວິເວກ ມີສັນຕິບົດ ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ວ່າ
ພິກຂຸເຫັນແນວໃດ ຈຶ່ງບໍ່ຖືໝັ້ນອັນໃດ ໆ ໃນໂລກ ດັບໄປ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໙໘໓] ພິກຂຸເພິ່ງກຳຈັດບາບທຳທັງປວງ
ທີ່ເປັນຮາກເຫງົ້າແຫ່ງກິເລດເຄື່ອງລ້າຊ້າ[២]

ແລະອັດສະມິມານະ ດ້ວຍມັນຕາ[๑]
ຕັນຫາແນວໃດແນວໜຶ່ງທີ່ເກີດໃນພາຍໃນ
ພິກຂຸມີສະຕິທຸກເມື່ອ ເພິ່ງສຶກສາເພື່ອກຳຈັດຕັນຫາເຫຼົ່ານັ້ນ

[໙໔໔] ພິກຂຸເພິ່ງຮູ້ຄຸນນະທຳແນວໃດແນວໜຶ່ງ
ໃນພາຍໃນຫຼືໃນພາຍນອກ
ແຕ່ບໍ່ຄວນທຳຄວາມດື້ດ້ານຍ້ອນຄຸນນະທຳນັ້ນ
ຍ້ອນການທຳຄວາມດື້ດ້ານນັ້ນ
ຜູ້ສະງົບທັງຫຼາຍບໍ່ກ່າວວ່າ ເປັນຄວາມດັບກິເລດ

[໙໔໕] ພິກຂຸບໍ່ເພິ່ງສຳຄັນຕົນວ່າ ເຮົາເລີດກວ່າເຂົາ ເຮົາຕ່ຳຕ້ອຍກວ່າເຂົາ
ຫຼືວ່າເຮົາສະເໝີເຂົາ ຍ້ອນຄຸນນະທຳນັ້ນ
ເປັນຜູ້ພຽບພ້ອມດ້ວຍຄຸນນະທຳເປັນອະເນກແລ້ວ
ບໍ່ເພິ່ງກຳນົດຕົນດຳລົງຢູ່

[໙໔໖] ພິກຂຸເພິ່ງສະງົບກິເລດພາຍໃນນັ້ນເອງ
ບໍ່ເພິ່ງສະແຫວງຫາຄວາມສະງົບໂດຍທາງອື່ນ
ເມື່ອພິກຂຸສະງົບກິເລດພາຍໃນໄດ້ແລ້ວ
ທິດຖິວ່າມີອັດຕາ ຫຼືທິດຖິວ່າບໍ່ມີອັດຕາກໍບໍ່ມີແຕ່ບ່ອນໃດ ໆ

[໙໔໗] ຄື້ນບໍ່ເກີດໃນສ່ວນກາງທະເລ ທະເລພຽງຢູ່ ສັນໃດ
ພິກຂຸເພິ່ງເປັນຜູ້ໝັ້ນຄົງ ບໍ່ຫວັ່ນໄຫວ ສັນນັ້ນ
ພິກຂຸບໍ່ເພິ່ງກໍ່ກິເລດເຄື່ອງຟູໃຈ[๒]ໃນບ່ອນໃດ ໆ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໙໔໘] ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸແຈ່ມແຈ້ງ
ໄດ້ຊົງສະແດງທຳທີ່ເປັນພະຍານ[๑]
ອັນເປັນທຳເຄື່ອງກຳຈັດອັນຕະລາຍ
ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະອົງຈົ່ງຕັດບອກປະຕິປະທາ
ຄືປາຕິໂມກ ຫຼືແມ່ນສະມາທິ

(ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

[໙໔໙] ພິກຂຸບໍ່ເພິ່ງເປັນຜູ້ມີຕາລອກແລກ

ເພິ່ງປ້ອງກັນຫູບໍ່ໃຫ້ໄດ້ຍິນຄາມະກະຖາ[๑]
ບໍ່ເພິ່ງຕິດໃຈໃນຣົດ ແລະບໍ່ເພິ່ງຍຶດຖືອັນໃດ ໆ
ໃນໂລກວ່າ ເປັນຂອງເຮົາ

[໙໑໐] ເມື່ອໃດ ພິກຂຸຖືກຜັດສະກະທົບ
ເມື່ອນັ້ນ ທ່ານກໍບໍ່ເພິ່ງທຳຄວາມຮ່ຳໄຮໃນບ່ອນໃດ ໆ
ບໍ່ເພິ່ງຄາດຫວັງພົບ ແລະບໍ່ເພິ່ງກະສັບກະສ່າຍ
ຍ້ອນອາລົມທີ່ເປັນຕາຢ້ານ

[໙໑໑] ພິກຂຸໄດ້ເຂົ້າກໍດີ ນ້ຳກໍດີ ຂອງຂົບຫຍ້ຳກໍດີ ຜ້າກໍດີ
ບໍ່ຄວນທຳການສະສົມ ເມື່ອບໍ່ໄດ້ເຂົ້າເປັນຕົ້ນ ກໍບໍ່ເພິ່ງສະດຸ້ງ

[໙໑໒] ພິກຂຸເພິ່ງເປັນຜູ້ມີຊານ ບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ
ເພິ່ງເວັ້ນຈາກຄວາມຄະນອງ ບໍ່ເພິ່ງຜະໝາດ
ແລະເພິ່ງຢູ່ໃນບ່ອນນັ່ງບ່ອນນອນທີ່ມີສຽງໜ້ອຍ

[໙໑໓] ພິກຂຸບໍ່ເພິ່ງຫຼັບຫຼາຍ ມີຄວາມພຽນເຄື່ອງເຜົາກິເລດ
ເພິ່ງປະກອບຄວາມພຽນເຄື່ອງຕື່ນຢູ່
ເພິ່ງລະເວັ້ນຄວາມຂີ້ຄ້ານ ຄວາມຫຼອກລວງ
ເລື້ອງຊວນຫົວ ການຫຼິ້ນ ເມຖຸນທຳ ພ້ອມທັງການປະດັບຕົກແຕ່ງ

[໙໑໔] ຜູ້ນັບຖືພຣະຣັດຕະນະໄຕຣບໍ່ເພິ່ງປະກອບການເຮັດອາຖັນ[๒]
ການທຳນາຍຝັນ ການທຳນາຍລັກສະນະ ຫຼືແມ່ນການເບິ່ງເລີກຍາມ
ບໍ່ເພິ່ງຮຽນການທຳນາຍສຽງສັດຮ້ອງ
ການປຸງຢາໃຫ້ຖືພາ ແລະການບຳບັດປິ່ນປົວພະຍາດ

[໙໑໕] ພິກຂຸບໍ່ເພິ່ງຫວັ່ນໄຫວຍ້ອນການນິນທາ
ແມ່ນໄດ້ຮັບການສັນເສີນກໍບໍ່ເພິ່ງລຳພອງຕົນ
ເພິ່ງບັນເທົາຄວາມໂລບລວມທັງຄວາມຂີ້ຖີ່
ຄວາມໂກດ ແລະວາຈາສັບສໍ່

[໙໑໖] ພິກຂຸບໍ່ເພິ່ງດຳລົງຊີວິດໃນການຊື້ຂາຍ
ບໍ່ເພິ່ງກໍ່ກິເລດເປັນເຫດວ່າຮ້າຍໃນບ່ອນໃດ ໆ
ບໍ່ເພິ່ງກ່ຽວຂ້ອງໃນເຮືອນ

ແລະບໍ່ເພິ່ງເວົ້າລຽບຄຽງກັບຄົນ ຍ້ອນຍາກໄດ້ລາບ

[໗໖໗] ພິກຂຸບໍ່ເພິ່ງເປັນຄົນມັກອວດ ບໍ່ເພິ່ງກ່າວວາຈາມຸ້ງໄດ້
ບໍ່ເພິ່ງສຶກສາຄວາມເປັນຜູ້ຄະນອງ
ບໍ່ເພິ່ງກ່າວຄຳເວົ້າແກ່ງແຍ່ງ

[໗໖໘] ພິກຂຸບໍ່ເພິ່ງມຸ້ງໝັ້ນໃນຄວາມເປັນຄົນເວົ້າຕົວະ
ເມື່ອຮູ້ໂຕກໍບໍ່ເພິ່ງທຳຄວາມໂອ້ອວດ
ແລະບໍ່ເພິ່ງດູໝິ່ນຜູ້ອື່ນດ້ວຍຄວາມເປັນຢູ່
ດ້ວຍປັນຍາ ດ້ວຍສີນແລະຂໍ້ວັດປະຕິບັດ

[໗໖໙] ພິກຂຸຜູ້ຖືກຄົນເຫຼົ່າອື່ນບຽດບຽນ
ໄດ້ຍິນຄຳເວົ້າຫຼາຍຂອງພວກສະມະນະ ຫຼືພວກຄົນເວົ້າຫຼາຍ (ເຫຼົ່າອື່ນ)
ບໍ່ເພິ່ງໂຕ້ຕອບຄົນເຫຼົ່ານັ້ນດ້ວຍຄຳຫຍາບ
ຍ້ອນຜູ້ສະງົບຍ່ອມບໍ່ສ້າງສັດຕູ

[໗໘໐] ພິກຂຸຮູ້ທຳນີ້ແລ້ວ ເລືອກຢູ່
ເພິ່ງເປັນຜູ້ມີສະຕິ ສຶກສາທຸກເມື່ອ
ຮູ້ຄວາມດັບກິເລດວ່າ ເປັນຄວາມສະງົບແລ້ວ
ບໍ່ເພິ່ງຜະໝາດໃນສາດສະໜາຂອງພຣະໂຄດົມ

[໗໘໑] ພິກຂຸນັ້ນເປັນຜູ້ຄອບງຳບໍ່ຖືກຄອບງຳ
ໄດ້ເຫັນທຳທີ່ເປັນພະຍານເຊິ່ງບໍ່ຕ້ອງເຊື່ອໃຜ
ຍ້ອນແນວນັ້ນ ທ່ານເພິ່ງເປັນຜູ້ບໍ່ຜະໝາດ
ໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ນອບນ້ອມຢູ່ ເພິ່ງໝັ່ນສຶກສາທຸກເມື່ອ

**ຕຸວະຕະກະສູດທີ ໑໔ ຈົບ**

## ໑໕. ອັດຕະທັນທະສູດ[໖]

### ວ່າດ້ວຍຄວາມຢ້ານເກີດຈາກໂທດຂອງຕົນ

(ພຣະຜູ້ມີພຣະພາກເຈົ້າຕັດທ່າມກາງໝູ່ທະຫານຂອງພຣະຍາດທັງສອງຝ່າຍດັ່ງນີ້)

[໙໔໒] ຄວາມຢ້ານເກີດຈາກໂທດຂອງຕົນ
ທ່ານທັງຫຼາຍຈົ່ງແນມເບິ່ງຄົນທີ່ມຸ້ງຮ້າຍກັນ
ເຮົາຈັກກ່າວຄວາມສັງເວດຕາມທີ່ເຮົາໄດ້ເຄີຍສັງເວດມາແລ້ວ

[໙໔໓] ຍ້ອນເຫັນໝູ່ສັດຜູ້ດີ້ນຮົນຢູ່
ຄືຝູງປາໃນນ້ຳສ້າງທີ່ມີນ້ຳໜ້ອຍ
ຍ້ອນເຫັນສັດທຳຮ້າຍກັນແລະກັນ ໄພຈຶ່ງຜາກົດແກ່ເຮົາ

[໙໔໔] ໂລກທັງໝົດ[໑]ບໍ່ມີແກ່ນສານ
ສັງຂານທັງຫຼາຍທຸກທິດກໍຫວັ່ນໄຫວ
ເຮົາເມື່ອຕ້ອງການພົບສຳລັບຕົນ
ກໍແນມບໍ່ເຫັນຖານະອັນໃດທີ່ບໍ່ຖືກຄອບງຳ

[໙໔໕] ຍ້ອນເຫັນສັດມີບ່ອນສິ້ນສຸດແລະຖືກສະກັດກັ້ນ
ຄວາມບໍ່ຍິນດີ ຈຶ່ງມີແກ່ເຮົາ
ອັນໜຶ່ງ ເຮົາໄດ້ເຫັນລູກສອນ[໒]ທີ່ເຫັນໄດ້ຍາກ
ອັນອາໄສຫະໄທໃນສັດເຫຼົ່ານີ້ແລ້ວ

[໙໔໖] ສັດຖືກລູກສອນໃດປັກຕິດແລ້ວ ແລ່ນພ່ານໄປທຸກທິດທາງ
ຍ້ອນຖອນລູກສອນນັ້ນໄດ້ແລ້ວ
ຈຶ່ງບໍ່ຕ້ອງແລ່ນພ່ານ ບໍ່ຕ້ອງລົ້ມ

[໙໔໗] ຄົນທັງຫຼາຍກ່າວເຖິງການສຶກສາ
ຍ້ອນການມະຄຸນທີ່ພົວພັນຢູ່ໃນໂລກ
ບຸກຄົນບໍ່ເພິ່ງເປັນຜູ້ຂົນຂວາຍໃນການສຶກສາຫຼືການມະຄຸນເຫຼົ່ານັ້ນ
ຮູ້ແຈ້ງກາມໂດຍປະການທັງປວງແລ້ວ
ເພິ່ງສຶກສາເພື່ອຄວາມດັບກິເລດຂອງຕົນ

[໙໔໘] ມຸນິເພິ່ງເປັນຜູ້ມີສັດຈະ ບໍ່ຄະນອງ ບໍ່ມີຄວາມຫຼອກລວງ
ປາສະຈາກວາຈາສັບສໍ່ ບໍ່ໂກດ
ຂ້າມພົ້ນຄວາມໂລບອັນຊົ່ວແລະຄວາມຫວງແຫນໄດ້ແລ້ວ

[໙໔໙] ນໍຣະຊົນເພິ່ງຄວບຄຸມຄວາມຫຼັບ ຄວາມຂີ້ຄ້ານ ຄວາມທໍ້ທໍ້
ບໍ່ເພິ່ງຢູ່ດ້ວຍຄວາມຜະໝາດ

ບໍ່ເພິ່ງຕັ້ງຢູ່ໃນຄວາມດູໝິ່ນ
ເພິ່ງນ້ອມໃຈໄປໃນນິບພານ

[໙໕໐] ນໍຣະຊົນບໍ່ເພິ່ງມຸ້ງໝັ້ນໃນຄວາມເປັນຄົນເວົ້າຕົວະ
ບໍ່ເພິ່ງທຳຄວາມສະເນ່ຫາໃນຮູບ
ເພິ່ງກຳນົດຮູ້ຄວາມຖືໂຕ
ແລະເພິ່ງປະພຶດລະເວັ້ນຈາກຄວາມຜຸນຜັນ

[໙໕໑] ນໍຣະຊົນບໍ່ເພິ່ງຍິນດີສັງຂານເກົ່າ
ບໍ່ເພິ່ງທຳຄວາມພໍໃຈສັງຂານໃໝ່
ເມື່ອສັງຂານເສື່ອມໄປກໍບໍ່ເພິ່ງເສົ້າໂສກ
ບໍ່ເພິ່ງຕິດຢູ່ກັບກິເລດເຄື່ອງກ່ຽວຂ້ອງ

[໙໕໒] ເຮົາຮຽກຄວາມຕິດໃຈວ່າ ແມ່ນ້ຳໃຫຍ່
ຮຽກຄວາມໂລດແລ່ນວ່າ ຄວາມປາຖະໜາ
ຮຽກອາລົມ໌ວ່າ ຄວາມຫວັ່ນໄຫວ
ເປືອກຕົມຄືກາມ ເປັນສະພາວະທີ່ລຸລ່ວງໄປໄດ້ຍາກ

[໙໕໓] ມຸນີບໍ່ກ້າວລ່ວງສັດຈະ ເປັນພາມດຳລົງຢູ່ເທິງບົກ
ມຸນີກຳຈັດສິ່ງທັງປວງໄດ້ແລ້ວ ມຸນີນັ້ນແລ ເຮົາຮຽກວ່າ ຜູ້ສະງົບ

[໙໕໔] ມຸນີນັ້ນແລມີຄວາມຮູ້ ຈົບເວດ ຮູ້ທຳແລ້ວ ກໍບໍ່ອາໄສ໌
ມຸນີນັ້ນຢູ່ໃນໂລກໂດຍຖືກຕ້ອງ
ຍ່ອມບໍ່ໃຝ່ຫາໃຜ ໆ ໃນໂລກນີ້

[໙໕໕] ຜູ້ໃດຂ້າມກາມແລະກິເລດເຄື່ອງຂ້ອງທີ່ລ່ວງໄດ້ຍາກໃນໂລກໄດ້
ຜູ້ນັ້ນຍ່ອມບໍ່ເສົ້າໂສກ ບໍ່ລະໂມບ
ເປັນຜູ້ຕັດກະແສໄດ້ ບໍ່ມີເຄື່ອງຜູກມັດ

[໙໕໖] ທ່ານຈົ່ງເຮັດກິເລດທີ່ຜາຣົບສັງຂານໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ
ກິເລດເຄື່ອງກັງວົນທີ່ຜາຣົບສັງຂານໃນສ່ວນພາຍຫຼັງ ຢ່າໄດ້ມີແກ່ທ່ານ
ຖ້າທ່ານຈັກບໍ່ຖືສັງຂານໃນສ່ວນທ່າມກາງໄວ້
ກໍຈັກເປັນຜູ້ເຂົ້າໄປສະງົບທ່ຽວໄປ

[໙໕໗] ຄວາມຍຶດຖືວ່າ ເປັນຂອງເຮົາໃນນາມຮູບ

ຍ່ອມບໍ່ມີແກ່ຜູ້ໃດໂດຍປະການທັງປວງ
ແລະຜູ້ໃດບໍ່ເສົ້າໂສກຍ້ອນບໍ່ມີຄວາມຍຶດຖືວ່າ ເປັນຂອງເຮົາ
ຜູ້ນັ້ນແລຊື່ວ່າ ຍ່ອມບໍ່ເສື່ອມໃນໂລກ໑

[໙໕໗] ກິເລດເຄື່ອງກັງວົນວ່າ ສິ່ງນີ້ຂອງເຮົາ
ຫຼືສິ່ງນີ້ຂອງຄົນອື່ນ ບໍ່ມີແກ່ຜູ້ໃດ
ຜູ້ນັ້ນ ເມື່ອບໍ່ໄດ້ຄວາມຍຶດຖືວ່າ ເປັນຂອງເຮົາ
ຍ່ອມບໍ່ເສົ້າໂສກວ່າ ສິ່ງຂອງຂອງເຮົາບໍ່ມີ

[໙໕໙] ບຸກຄົນເປັນຜູ້ບໍ່ຣິດສະຫຍາ ບໍ່ຕິດໃຈ ບໍ່ຫວັ່ນໄຫວ
ສະໝໍ່າສະເໝີໃນອາຍະຕະນະທັງປວງ
ເຮົາຖືກຖາມເຖິງບຸກຄົນຜູ້ບໍ່ຫວັ່ນໄຫວ ຈຶ່ງບອກອານິສົງນັ້ນ

[໙໖໐] ອະພິສັງຂານໃດ ໆ ບໍ່ມີແກ່ຜູ້ບໍ່ຫວັ່ນໄຫວ ຮູ້ແຈ່ມແຈ້ງ
ເຂົາງົດເວັ້ນແລ້ວຈາກການຜາຣົບອະພິສັງຂານ
ຍ່ອມແນມເຫັນຄວາມປອດໂປ່ງໃນບ່ອນທັງປວງ

[໙໖໑] ມຸນີຍ່ອມບໍ່ກ່າວເຖິງຕົນໃນໝູ່ຊົນທີ່ສະເໝີກັນ
ຕໍ່າຕ້ອຍກວ່າ (ຫຼື) ເລີດກວ່າເລີຍ
ມຸນີນັ້ນເປັນຜູ້ສະງົບ ຄາຍຄວາມຂີ້ຖີ່ ບໍ່ຍຶດຖື ບໍ່ກໍາຈັດຖິ້ມ

**ອັດຕະທັນທະສູດທີ ໑໕ ຈົບ**

## ໑໖. ສາຣີປຸດຕະສູດ໑

### ວ່າດ້ວຍພຣະສາຣີບຸດກ່າວສັນເສີນພຣະພຸດທະຄຸນ

(ທ່ານພຣະສາຣີບຸດຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້)

[໙໖໔] ພຣະສາດສະດາຜູ້ມີພຣະສຸຣະສຽງມ່ວນແນວນີ້
ໄດ້ສະເດັດຈາກພົບດຸສິດມາເປັນພຣະຄະນາຈານ
ກ່ອນໜ້ານີ້ ຂ້າພຣະອົງບໍ່ເຄີຍເຫັນ
ທັງບໍ່ເຄີຍໄດ້ຍິນຈາກໃຜ ໆ ມາເລີຍ

[໙໖໓] ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸ

ຍ່ອມຜາກົດແກ່ຊາວໂລກພ້ອມທັງເທວະໂລກ
ຊົງກຳຈັດຄວາມມືດທັງປວງ
ຊົງເປັນເອກບຸຣຸດ ບັນລຸຄວາມຍິນດີແລ້ວ

[໙໖໔] ຂ້າພຣະອົງມີຄວາມຕ້ອງການ (ຖາມ)ບັນຫາ
ຈຶ່ງມາເຝົ້າພຣະພຸດທະເຈົ້າພຣະອົງນັ້ນ
ຜູ້ບໍ່ຊົງຖືກກິເລດອາໄສ ເປັນຜູ້ໝັ້ນຄົງ ບໍ່ຫຼອກລວງ
ສະເດັດມາເປັນພຣະຄະນາຈານ ຂອງຄົນທັງຫຼາຍ
ຜູ້ຍັງຜູກພັນຢູ່ໃນສາດສະໜານີ້

[໙໖໕] ເມື່ອພິກຂຸເບື່ອໜ່າຍ ໃຊ້ສອຍບ່ອນນັ່ງອັນວ່າງເປົ່າ
ໃນຖ້ຳແຫ່ງພູ ທີ່ເຫງົ້າໄມ້ ຫຼືທີ່ປ່າຊ້າ

[໙໖໖] ພິກຂຸຢູ່ເທິງບ່ອນນອນບ່ອນນັ່ງອັນບໍ່ມີສຽງອື້ອຶງ
ເຫັນອາລົມທີ່ເປັນຕາເຫຍືອງເຫຼົ່າໃດແລ້ວ ບໍ່ເພິ່ງຫວັ່ນໄຫວ
ພິກຂຸ (ອື່ນ) ເພິ່ງຫວັ່ນໄຫວຮ້ອງໄຫ້ຢູ່ເທິງບ່ອນນອນສູງແລະໃຫຍ່
ເຊິ່ງເປັນທີ່ມີອາລົມທີ່ເປັນຕາເຫຍືອງ

[໙໖໗] ພິກຂຸເມື່ອຈະໄປສູ່ທິດທີ່ບໍ່ເຄີຍໄປ[9]
ເພິ່ງຜາບປາມອັນຕະລາຍທີ່ມີຢູ່ໃນໂລກ
ເທິງບ່ອນນັ່ງບ່ອນນອນອັນງຽບສະຫງັດ

[໙໖໘] ພິກຂຸອົບຮົມຕົນຢູ່ ເພິ່ງມີແນວທາງແຫ່ງຄຳເວົ້າແນວໃດ
ເພິ່ງມີໂຄຈອນໃນສາດສະໜານີ້ແນວໃດ ເພິ່ງມີສິນແລະຂໍ້ວັດປະຕິບັດແນວໃດ

[໙໖໙] ພິກຂຸນັ້ນເພິ່ງສະມາທານສິກຂາອັນໃດ
ຈຶ່ງມີສະມາທິເປັນທຳເອກຜຸດຂຶ້ນ
ມີປັນຍາຮັກສາຕົນ ມີສະຕິກຳຈັດມົນທິນຂອງຕົນໄດ້
ຄືຊ່າງຄຳກຳຈັດມົນທິນຄຳ ສັນນັ້ນ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ ສາຣີບຸດ)

[໙໗໐] ເຮົາຈັກບອກຄວາມຜາສຸກ ແລະທຳຕາມສົມຄວນນັ້ນ
ຂອງຜູ້ເບື່ອໜ່າຍ ໃຊ້ສອຍບ່ອນນັ່ງບ່ອນນອນອັນສະຫງັດ
ຜູ້ປາຖະໜາສຳໂພທິຍານແກ່ທ່ານ ຕາມທີ່ຮູ້

[໕໗໑] ພິກຂຸຜູ້ເປັນນັກປາດ ມີສະຕິ
ປະພຶດທຳອັນເປັນສ່ວນສຸດຮອບ
ບໍ່ເພິ່ງຢ້ານໄພ ໕ ຢ່າງ ຄື
ເຮືອດ ສັດໄຕ່ຕອມ ສັດເລືອຄານ
ສຳຜັດຈາກມະນຸດ ແລະສັດ ໔ ຕີນ

[໕໗໘] ພິກຂຸບໍ່ເພິ່ງຢ້ານກົວຜູ້ຖືທຳອື່ນ
ແມ່ນເຫັນອາລົມເປັນຕາເຫຍືອງຫຼວງຫຼາຍ
ຂອງຜູ້ຖືທຳອື່ນເຫຼົ່ານັ້ນ ກໍບໍ່ເພິ່ງຢ້ານກົວ
ອັນໜຶ່ງ ພິກຂຸຜູ້ໝັ່ນສະແຫວງຫາກຸສົນທຳ
ເພິ່ງຜາບປາມອັນຕະລາຍອື່ນ ໆ

[໕໗໙] ພິກຂຸຖືກຜັດສະແຫ່ງຄວາມເຈັບປ່ວຍແລະຄວາມຫິວກະທົບແລ້ວ
ເພິ່ງອົດກັ້ນຄວາມໜາວ ຫຼືຄວາມຮ້ອນ
ພິກຂຸນັ້ນຖືກຜັດສະເຫຼົ່ານັ້ນກະທົບແລ້ວ
ໂດຍອາການຫຼາຍຢ່າງ ກໍບໍ່ໃຫ້ໂອກາດ
ເພິ່ງເຮັດຄວາມພຽນແລະຄວາມບາກບັ່ນໃຫ້ໝັ້ນຄົງ

[໕໗໔] ພິກຂຸບໍ່ເພິ່ງລັກ ບໍ່ເພິ່ງເວົ້າຕົວະ
ເພິ່ງແຜ່ເມດຕາໄປສູ່ສັດທັງຜູ້ຍັງຕື່ນຕົກໃຈ ແລະຜູ້ໝັ້ນຄົງ
ເມື່ອໃດ ພິກຂຸຮູ້ແຈ້ງຄວາມຂຸ່ນມົວແຫ່ງໃຈ
ເມື່ອນັ້ນ ທ່ານເພິ່ງບັນເທົາດ້ວຍມະນະສິການວ່າ
ນີ້ເປັນຝັກຝ່າຍແຫ່ງມານຜູ້ມີກຳດຳ

[໕໗໕] ພິກຂຸບໍ່ເພິ່ງລຸອຳນາດແຫ່ງຄວາມໂກດແລະຄວາມດູໝິ່ນ
ທັງເພິ່ງຂຸດຮາກຄວາມໂກດແລະຄວາມດູໝິ່ນເຫຼົ່ານັ້ນດຳລົງຢູ່
ແຕ່ເມື່ອຈະຜາບ ກໍເພິ່ງຄອບງຳສັດຫຼືສັງຂານ
ທີ່ເປັນທີ່ຮັກບໍເປັນທີ່ຮັກໂດຍແທ້
[໕໗໖] ພິກຂຸຜູ້ມີປີຕິໃນເລື້ອງດີງາມ ເພິ່ງເຊີດຊູປັນຍາ
ເພິ່ງຂົ່ມອັນຕະລາຍເຫຼົ່ານັ້ນ
ເພິ່ງຜາບຄວາມບໍ່ຍິນດີໃນບ່ອນນັ່ງບ່ອນນອນອັນສະຫງັດ
ທັງຜາບທຳອັນເປັນບ່ອນຕັ້ງແຫ່ງຄວາມຮ່ຳໄຮ ໔ ປະການ

[໕໗໗] ເຮົາຈັກສັນອັນໃດນໍ ຫຼືຈັກສັນຢູ່ໄສ

ຄືນນີ້ເຮົານອນລໍາບາກແລ້ວນໍ ເຮົາຈັກນອນບ່ອນໃດນໍ
ພິກຂຸຜູ້ເປັນເສຂະເພິ່ງກຳຈັດວິຕົກອັນເປັນບ່ອນຕັ້ງ
ແຫ່ງຄວາມຮໍ່າໄຮເຫຼົ່ານີ້ ເປັນຜູ້ບໍ່ມີກັງວົນທ່ອງທ່ຽວໄປ

[໙໗໘] ພິກຂຸນັ້ນໃນທໍາວິໄນນີ້
ໄດ້ອາຫານແລະເຄື່ອງນຸ່ງຫົ່ມໃນການແລ້ວ
ເພິ່ງຮູ້ຈັກປະມານເພື່ອສັນໂດດ
ພິກຂຸນັ້ນຄຸ້ມຄອງໃນປັດໄຈເຫຼົ່ານັ້ນ
ເປັນຜູ້ສັງລວມທ່ຽວໄປໃນໝູ່ບ້ານ
ແມ່ນຖືກດ່າ ກໍບໍ່ເພິ່ງກ່າວວາຈາຫຍາບ

[໙໗໙] ພິກຂຸເພິ່ງເປັນຜູ້ບໍ່ສອດສ່າຍຈັກຂຸ
ແລະບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ
ເພິ່ງເປັນຜູ້ຂົນຂວາຍໃນຊານ ຕື່ນຢູ່ສ່ວນຫຼາຍ
ຜາຣົບອຸເປກຂາ ມີຈິດຕັ້ງໝັ້ນ
ເພິ່ງເຂົ້າໄປຕັດຄວາມນຶກທໍາ
ທີ່ອາໄສຄວາມນຶກແລະຄວາມຄະນອງ

[໙໘໐] ພິກຂຸຖືກຜູ້ຕັກເຕືອນດ້ວຍວາຈາ ເພິ່ງມີສະຕິຊື່ນຊົມ
ທໍາລາຍຄວາມກະດ້າງໃນເພື່ອນພົມມະຈາຣີ
ເພິ່ງເປ່ງວາຈາເປັນກຸສົນ
ບໍ່ເພິ່ງເປ່ງວາຈາເກີນຂອບເຂດ
ບໍ່ເພິ່ງຄິດຫາເລື້ອງທີ່ຈະວ່າກ່າວຄົນ

[໙໘໑] ລໍາດັບຕໍ່ໄປ ພິກຂຸເພິ່ງເປັນຜູ້ມີສະຕິ
ສຶກສາເພື່ອກຳຈັດທຸລີ ໕ ຢ່າງໃນໂລກ
ຄືເພິ່ງຜາບປາມຣາຄະໃນຮູບ ຣາຄະໃນສຽງ ຣາຄະໃນກິ່ນ
ຣາຄະໃນຣົດ ແລະຣາຄະໃນຜັດສະ

[໙໘໒] ພິກຂຸເປັນຜູ້ມີສະຕິ ມີຈິດລຸດພົ້ນດ້ວຍດີແລ້ວ
ເພິ່ງກຳຈັດຄວາມພໍໃຈໃນທໍາເຫຼົ່ານີ້
ພິກຂຸນັ້ນເມື່ອກຳນົດພິຈາລະນາທຳໂດຍຖືກຕ້ອງຕາມການ
ເປັນຜູ້ມີສະມາທິເປັນທຳເອກຜຸດຂຶ້ນ ເພິ່ງກຳຈັດຄວາມມືດ

**ສາຣີປຸດຕະສູດທີ ໑໖ ຈົບ**

**ອັດຖະກະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ກາມະສູດ | ໔. ຄຸຫັດຖະກະສູດ |
| ໓. ທຸດທັດຖະກະສູດ | ໔. ສຸດທັດຖະກະສູດ |
| ໕. ປະຣະມັດຖະກະສູດ | ໖. ຊະຣາສູດ |
| ໗. ຕິດສະເມດເຕີຍຍະສູດ | ໘. ປະສູຣະສູດ |
| ໙. ມາຄັນທິຍະສູດ | ໑໐. ປຸຣາເພທະສູດ |
| ໑໑. ກະລະຫະວິວາທະສູດ | ໑໔. ຈູລະວິຍູຫະສູດ |
| ໑໓. ມະຫາວິຍູຫະສູດ | ໑໔. ຕຸວະຕະກະສູດ |
| ໑໕. ອັດຕະທັນທະສູດ | ໑໖. ສາຣີປຸດຕະສູດ |

# ໕. ປາຣາຍະນະວັກ

## ໝວດວ່າດ້ວຍທຳເປັນເຫດໃຫ້ເຖິງຝັ່ງ

## ວັດຖຸກະຖາ[1]

### ພາມພາວະຣີສົ່ງສິດໄປທູນຖາມບັນຫາ

[໙໘໓] ເລື້ອງພາມພາວະຣີຜູ້ຮຽນຈົບມົນ
ປາຖະໜາຄວາມເປັນຜູ້ບໍ່ມີກັງວົນ
ຈຶ່ງເດີນທາງອອກຈາກແຄວ້ນໂກສົນອັນອອນຊອນ
ໄປສູ່ທັກຂິນາປະຖະຊົນບົດ

[໙໘໔] ທ່ານອາໄສຢູ່ທີ່ຝັ່ງແມ່ນ້ຳໂຄທາວະຣີ
ອັນເປັນຊາຍແດນແຄວ້ນອັດສະກະແລະແຄວ້ນມຸລະກະຕໍ່ກັນ
(ລ້ຽງຊີບ) ຢູ່ດ້ວຍການທ່ຽວພິກສາແລະໝາກໄມ້

[໙໘໕] ຍ້ອນອາໄສພາມນັ້ນ ໆ ເອງ
ໝູ່ບ້ານຈຶ່ງໄດ້ຈະເລີນໄພບູນ
ທ່ານໄດ້ປະກອບພິທີມະຫາຍັນຂຶ້ນ
ດ້ວຍລາຍໄດ້ທີ່ເກີດຈາກໝູ່ບ້ານນັ້ນ

[໙໗໖] ທ່ານບູຊາພິທີມະຫາຍັນສຳເລັດແລ້ວ ກໍກັບເຂົ້າອາສົມ
ເມື່ອທ່ານກັບເຂົ້າອາສົມແລ້ວ
ພາມອີກຄົນໜຶ່ງກໍເດີນທາງມາເຖິງ

[໙໗໗] ພາມທີ່ມາພົບນັ້ນ ມີຕີນຍ່າງສຽດສີກັນ
ທ່າທາງເປັນຕາຢ້ານມີແຂ້ວສົກກະປົກ
ຫົວເປື້ອນເປິດ້ວຍສິ່ງສົກກະປົກ
ເຂົ້າໄປຫາພາມພາວະຣີແລ້ວ
ຂໍຊັບ ໕໐໐ ກະຫາປະນະ

[໙໗໘] ພາມພາວະຣີເຫັນເຂົານັ້ນແລ້ວກໍເຊີນໃຫ້ນັ່ງ
ໄຕ່ຖາມເຖິງຄວາມສຸກຄວາມສະບາຍ ຈຶ່ງກ່າວຄຳນີ້ວ່າ

[໙໗໙] ສິ່ງຂອງທີ່ຄວນໃຫ້ເຊິ່ງເປັນຂອງເຮົາທັງໝົດ
ເຮົາບໍລິຈາກໄປແລ້ວ ພາມເອີຍ
ທ່ານຈົ່ງເຊື່ອເຮົາເທີ້ນ ເຮົາບໍ່ມີຊັບ ໕໐໐ ເລີຍ

[໙໙໐] (ປັງກະທັນຕະພາມກ່າວວ່າ)
ຖ້າເມື່ອເຮົາຂໍ ທ່ານບໍ່ໃຫ້ສິ່ງທີ່ມີຢູ່
ໃນວັນທີ ໗ ຂໍໃຫ້ຫົວທ່ານແຕກເປັນ ໗ ສ່ຽງ

[໙໙໑] ພາມນັ້ນເປັນຄົນຕົວະ
ສະແດງທ່າທາງ (ຫຼອກລວງ)ກ່າວຄຳເຮັດໃຫ້ເປັນຕາຢ້ານ
ພາມພາວະຣີໄດ້ຟັງຄຳເວົ້າຂອງເຂົາແລ້ວກໍເປັນທຸກ

[໙໙໒] (ພາມພາວະຣີ) ຖືກລູກສອນຄືຄວາມໂສກສຽບແທງແລ້ວ
ບໍ່ບໍຣິໂພກອາຫານ ຊູບຜອມ
ເມື່ອທ່ານມີຄວາມຄິດແນວນັ້ນ ໃຈກໍບໍ່ຍິນດີໃນຊານ

[໙໙໓] ເທວະດາຜູ້ປາຖະໜາປະໂຫຍດ
ເຫັນພາມພາວະຣີຢ້ານກົວ ເປັນທຸກຢູ່
ຈຶ່ງເຂົ້າໄປຫາທ່ານແລ້ວກ່າວຄຳນີ້ວ່າ

[໙໙໔] ພາມຜູ້ຕ້ອງການຊັບນັ້ນ ເປັນຄົນຕົວະ
ເຂົາບໍ່ຮູ້ຈັກຫົວ ບໍ່ມີຄວາມຮູ້ເລື້ອງຫົວ
ແລະທຳທີ່ເຮັດໃຫ້ຫົວຕົກໄປ

[໙໙໕] ພາມພາວະຣີຄິດວ່າ ເທວະດາຜູ້ຈະເລີນນີ້ຄົງຈະຮູ້
(ຈຶ່ງກ່າວໄປວ່າ) ຂ້າພະເຈົ້າຂໍຖາມເລື້ອງຫົວ
ແລະທຳທີ່ເຮັດໃຫ້ຫົວຕົກໄປ
ຂໍທ່ານຈົ່ງບອກເລື້ອງນັ້ນແກ່ຂ້າພະເຈົ້າດ້ວຍເທີ້ນ
ຂ້າພະເຈົ້າຂໍຟັງຄຳຕອບຂອງທ່ານ

[໙໙໖] (ເທວະດາກ່າວວ່າ)
ແມ່ນຂ້າພະເຈົ້າກໍບໍ່ຮູ້ຈັກເລື້ອງຫົວ
ແລະທຳທີ່ເຮັດໃຫ້ຫົວຕົກໄປ
ຂ້າພະເຈົ້າບໍ່ມີຄວາມຮູ້ໃນເລື້ອງນີ້
ເລື້ອງຫົວແລະທຳທີ່ເຮັດໃຫ້ຫົວຕົກໄປ
ເປັນວິໄສຂອງພຣະຊິນນະເຈົ້າທໍ່ນັ້ນ

[໙໙໗] (ພາມພາວະຣີກ່າວວ່າ)
ເທວະດາ ກໍໃຜນໍໃນປະຖະພີມົນທົນນີ້
ຮູ້ຈັກເລື້ອງຫົວແລະທຳເປັນເຫດໃຫ້ຫົວຕົກໄປ
ຂໍທ່ານຈົ່ງບອກຜູ້ນັ້ນແກ່ຂ້າພະເຈົ້າດ້ວຍເທີ້ນ

[໙໙໘] (ເທວະດາກ່າວວ່າ)
ພຣະໂອຣົດຂອງເຈົ້າສາກະຍະ
ເປັນເຊື້ອພຣະວົງຂອງພຣະເຈົ້າໂອກກາກະ
ສະເດັດອອກບວດຈາກເມືອງກະບິນລະພັດ
ຊົງເປັນຜູ້ນຳສັດໂລກ ເປັນຜູ້ກໍ່ຄວາມສະຫວ່າງສະໄຫວ

[໙໙໙] (ເທວະດາກ່າວວ່າ)
ພາມ ເຈົ້າສາກະຍະບຸດພຣະອົງນັ້ນ
ເປັນພຣະສຳພຸດທະເຈົ້າ ຊົງເຖິງຝັ່ງແຫ່ງທຳທັງປວງ
ບັນລຸກຳລັງແຫ່ງອະພິນຍາທັງໝົດແລ້ວ
ມີພຣະຈັກຂຸໃນທຳທັງປວງ
ຊົງເຖິງທຳເປັນທີ່ສິ້ນສຸດກຳທຸກຢ່າງ
ຊົງນ້ອມພຣະຫະໄທໄປໃນທຳເປັນທີ່ສິ້ນສຸດອຸປະທິ

[໑໐໐໐] ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະພຸດທະເຈົ້າໃນໂລກ
ມີພຣະຈັກຂຸ ຊົງສະແດງທຳ

ທ່ານຈົ່ງໄປທູນຖາມພຣະອົງເທີ້ນ
ພຣະອົງຈັກຕັດຕອບບັນຫານັ້ນແກ່ທ່ານໄດ້

[໑໐໐໑] ພາມພາວະຣີໄດ້ຟັງຄໍາວ່າ ພຣະສໍາພຸດທະເຈົ້າ
ກໍມີຄວາມເບີກບານໃຈ
ມີຄວາມໂສກເບົາບາງແລະໄດ້ຮັບປີຕິປ່ຽມລົ້ນ

[໑໐໐໒] ພາມພາວະຣີນັ້ນດີໃຈ ເບີກບານໃຈ
ເກີດຄວາມຍິນດີໃຈ
ຈຶ່ງໄຕ່ຖາມເທວະດາເຖິງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
(ແລະປະກາດວ່າ) ພຣະສໍາພຸດທະເຈົ້າຜູ້ເປັນບ່ອນເພິ່ງຂອງສັດໂລກ
ປະທັບຢູ່ບ່ອນໃດ ຈະເປັນເຮືອນ ນິຄົມ ຫຼືຊົນນະບົດໃດກໍຕາມ
ພວກເຮົາເພິ່ງໄປນະມັດສະການພຣະສໍາພຸດທະເຈົ້າ
ຜູ້ສູງສຸດກວ່າເທວະດາແລະມະນຸດທັງຫຼາຍ

[໑໐໐໓] (ເທວະດາກ່າວວ່າ)
ເຈົ້າສາກະຍະບຸດພຣະອົງນັ້ນ ຊົງຊະນະມານ
ມີພຣະປັນຍາກວ້າງຂວາງ ມີພຣະປັນຍາລໍ້າເລີດແຜ່ໄພສານຍິ່ງ
ຊົງປາສະຈາກທຸລະ ບໍ່ມີອາສະວະ
ຊົງເປັນຜູ້ຮູ້ແຈ້ງເລື້ອງທົ່ວແລະທໍາທີ່ເຮັດໃຫ້ຫົວຕົກໄປ
ຊົງເປັນຜູ້ອົງອາດກວ່ານໍຣະຊົນ
ປະທັບຢູ່ ມີນທຽນສະຖານຂອງຊົນຊາວໂກສົນ ເຂດນະຄອນສາວັດຖີ
[໑໐໐໔] ລໍາດັບນັ້ນ ພາມພາວະຣີໄດ້ຮຽກພາມທັງຫຼາຍ
ຜູ້ເປັນສິດ ເຊິ່ງຮຽນຈົບມົນມາກ່າວວ່າ
ມານົບທັງຫຼາຍ ມານີ້ເທີ້ນ ເຮົາຈັກບອກ
ຂໍພວກທ່ານຈົ່ງຟັງຄໍາຂອງເຮົາ
[໑໐໐໕] (ພາມພາວະຣີກ່າວວ່າ)
ຄວາມທີ່ພຣະຜູ້ມີພຣະພາກເຈົ້າພຣະອົງໃດຜາກົດເນືອງ ໆ ໃນໂລກ
ນັ້ນຫາໄດ້ຍາກ
ມື້ນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ສະເດັດອຸບັດຂຶ້ນໃນໂລກແລ້ວ ຜາກົດພຣະນາມວ່າ ພຣະສໍາພຸດທະເຈົ້າ
ທ່ານທັງຫຼາຍຈົ່ງຟ້າວໄປນະຄອນສາວັດຖີ ເຂົ້າເຝົ້າພຣະສໍາພຸດທະເຈົ້າ
ຜູ້ສູງສຸດກວ່າເທວະດາແລະມະນຸດທັງຫຼາຍ

[໑໐໐໖] (ມານົບທັງຫຼາຍຖາມວ່າ)
ຂ້າແດ່ພາມ ຖ້າຂ້າພະເຈົ້າທັງຫຼາຍພົບແລ້ວ
ຈະຮູ້ໄດ້ແນວໃດວ່າເປັນພຣະພຸດທະເຈົ້າ
ຂໍທ່ານຈົ່ງບອກວິທີທີ່ຈະຮູ້ຈັກພຣະອົງ
ແກ່ພວກຂ້າພະເຈົ້າຜູ້ບໍ່ຮູ້ດ້ວຍເທີ້ນ

[໑໐໐໗] (ພາມພາວະຣີກ່າວວ່າ)
ກໍລັກສະນະມະຫາບຸຣຸດ ໓໒ ປະການ
ອັນມາແລ້ວໃນມົນທັງຫຼາຍ
ທ່ານກ່າວໄວ້ແຈ່ມແຈ້ງຄົບຖ້ວນໂດຍລຳດັບວ່າ

[໑໐໐໘] ບຸກຄົນໃດມີລັກສະນະມະຫາບຸຣຸດເຫຼົ່ານັ້ນຢູ່ໃນໂຕ
ບຸກຄົນນັ້ນມີຄະຕິເປັນ ໒ ຢ່າງທີ່ນັ້ນ
ບໍ່ໄດ້ມີຄະຕິເປັນທີ ໓ ເລີຍ

[໑໐໐໙] ຄື ຖ້າບຸກຄົນນັ້ນຢູ່ຄອງເຮືອນຈະເພິ່ງຄອບຄອງແຜ່ນດິນນີ້
ຍ່ອມປົກຄອງໂດຍທຳ ໂດຍບໍ່ຕ້ອງໃຊ້ອາດຍາ ບໍ່ຕ້ອງໃຊ້ອາວຸດ

[໑໐໑໐] ແຕ່ຖ້າບຸກຄົນນັ້ນອອກຈາກເຮືອນບວດເປັນບັນພະຊິດ
ຈະເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຜູ້ປະເສີດ
ມີກິເລດຄືເຄື່ອງປິດບັງ°ອັນເປີດແລ້ວ

[໑໐໑໑] ພວກທ່ານຈົ່ງທູນຖາມດ້ວຍໃຈທີ່ນັ້ນ
ເຖິງຊາດ ໂຄດ ລັກສະນະ
ມົນ ສິດຄົນອື່ນ ໆ
ຫົວ ແລະທຳທີ່ເຮັດໃຫ້ຫົວຕົກໄປ
[໑໐໑໒] ຖ້າບຸກຄົນນັ້ນເປັນພຣະພຸດທະເຈົ້າ
ຜູ້ມີປົກກະຕິເຫັນທຳທາເຄື່ອງກາງກັ້ນບໍ່ໄດ້
ເມື່ອພວກທ່ານຖາມບັນຫາດ້ວຍໃຈແລ້ວ
ກໍຈັກຊົງວິສັດຊະນາດ້ວຍພຣະວາຈາ
[໑໐໑໓] ເມື່ອໄດ້ຟັງຄຳຂອງພາມພາວະຣີແລ້ວ
ພາມ ໑໖ ຄົນ ຜູ້ເປັນສິດ ຄື (໑) ອະຊິຕະ
(໒) ຕິດສະເມດເຕີຍຍະ (໓) ປຸນນະກະ (໔) ເມດຕະຄູ

[໑໐໑໔] (໕) ໄທຕະກະ (໖) ອຸປະສີວະ (໗) ນັນທະ (໘) ເຫມະກະ
(໙) ໂຕເທີຍຍະ (໑໐) ກັບປະ (໑໑) ຊະຕຸກັນນີ ຜູ້ເປັນບັນດິດ

[໑໐໑໕] (໑໒) ພັດທະຣາວຸດ (໑໓) ອຸໄທ (໑໔) ໂປສາຣະ
(໑໕) ໂມຄະຣາດ ຜູ້ມີປັນຍາ (໑໖) ປິງຄິຍະ ຜູ້ເປັນມະຫາລືສີ

[໑໐໑໖] ພາມຜູ້ເປັນສິດ ໑໖ ຄົນນັ້ນ
ແຕ່ລະຄົນເປັນເຈົ້າໝູ່ ເຈົ້າຄະນະ
ມີຊື່ຜາກົດແກ່ຊາວໂລກທົ່ວໄປ
ເປັນຜູ້ພ່ຳເພັງຊານ ຍິນດີໃນຊານ
ເປັນຜູ້ຊົງປັນຍາປາດເປື່ອງ
ເຄີຍອົບຣົມວາດສະໜາແຕ່ຊາດປາງກ່ອນ໑ທັ້ງຫຼາຍ

[໑໐໑໗] ທຸກຄົນເກົ້າຊະດາແລະຄອງໜັງເສືອ
ອະພິວາດພາມພາວະຣີແລະກະທຳປະທັກຂິນແລ້ວ
ຕ່າງອອກເດີນທາງ ມຸ້ງໜ້າໄປທາງທິດອຸດອນ

[໑໐໑໘] ສູ່ສະຖານເປັນບ່ອນຕັ້ງແຄວ້ນອຸລະກະ ເມືອງມາຫິດສະຕິໃນການນັ້ນ
ນະຄອນອຸດເຊນີ ເມືອງໂຄນັດທະ ເມືອງເວທິສາ ເມືອງວະນະສະວະຫະຍະ໒

[໑໐໑໙] ນະຄອນໂກສຳພີ ເມືອງສາເກດ ນະຄອນສາວັດຖີອັນອຸດົມ
ເມືອງເສຕັບພະຍະ ເມືອງກະບິນລະພັດ ນະຄອນກຸສິນາຣາ

[໑໐໒໐] ນະຄອນປາວາ ໂພກຄະນະຄອນ ນະຄອນເວສາລີ ແຄວ້ນມະຄົດ
ແລະປາສານະກະເຈດີອັນໜ້າອອນຊອນ ໜ້າບັນເທີງໃຈ

[໑໐໒໑] ພາມເຫຼົ່ານັ້ນຟ້າວຂຶ້ນສູ່ພູ
ຄືຄົນຫິວນ້ຳ ຟ້າວຫານ້ຳເຢັນດື່ມ
ຄືພໍ່ຄ້າໄດ້ລາບໃຫຍ່ມາຄອງ
ແລະຄືຄົນຖືກຄວາມຮ້ອນແຜດເຜົາຟ້າວຫາຮົ່ມເງົາ ສັນນັ້ນ

[໑໐໒໒] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າມີພິກຂຸສົງຮ້ອມລ້ອມ
ຊົງສະແດງທຳແກ່ພິກຂຸທັງຫຼາຍຢູ່
ຄືກັບວ່າຣາດຊະສີບັນລືສີຫະນາດຢູ່ໃນປ່າ

[໑໐໘໓] ອະຊິຕະມານົບໄດ້ເຫັນພຣະພຸດທະເຈົ້າ
ຜູ້ເປັນຄືດວງອາທິດອັນມີຣັດສະໝີຮຸ່ງເຮືອງ
ແລະຄືດວງຈັນເຕັມດວງໃນມື້ເພັງ ສັນນັ້ນ

[໑໐໘໔] ລຳດັບນັ້ນ ອະຊິຕະມານົບຢືນຢູ່ບ່ອນທີ່ສົມຄວນ
ບັນເທີງໃຈຍ້ອນໄດ້ເຫັນອະນຸພະຍັນຊະນະ
ບໍລິບູນໃນພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າ
ຈຶ່ງໄດ້ທູນຖາມບັນຫາດ້ວຍໃຈວ່າ

[໑໐໘໕] (ອະຊິຕະມານົບທູນຖາມບັນຫາທາງໃຈວ່າ)
ຂໍພຣະອົງຕັດຣະບຸໃຫ້ຊັດເຈັນ
ເຖິງຊາດ ໂຄດພ້ອມດ້ວຍລັກສະນະ
ຂໍຈົ່ງຕັດບອກຄວາມສຳເລັດໃນມົນທັງຫຼາຍວ່າ
ພາມສອນມານົບທີ່ໃດ

[໑໐໘໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)
ພາມນັ້ນມີອາຍຸ ໑໒໐ ປີ
ຊື່ພາວະຣີໂດຍໂຄດ ມີລັກສະນະ ໓ ຢ່າງຢູ່ໃນໂຕ
ເປັນຜູ້ຮຽນຈົບໄຕຣເພດ

[໑໐໘໗] ພາມພາວະຣີນັ້ນເຖິງຄວາມສຳເລັດ
ໃນລັກສະນະມົນ ແລະປະຫວັດສາດ[๑]
ພ້ອມທັງນິກຄັນທຸສາດ[๒] ແລະເກຕຸພະສາດ[๓]
ຊື່ວ່າເຖິງຄວາມສຳເລັດໃນຫຼັກທຳຂອງຕົນ
ກ່າວສອນມົນແກ່ສິດຈຳນວນ ໕໐໐ ຄົນ

[໑໐໘໘] (ອະຊິຕະມານົບທູນຖາມວ່າ)
ຂ້າແດ່ພຣະອົງຜູ້ສູງສຸດກວ່ານໍຣະຊົນ ຜູ້ຕັດຕັນຫາໄດ້
ຂໍພຣະອົງຈົ່ງຊົງປະກາດຄວາມເດ່ນແຈ້ງ
ແຫ່ງລັກສະນະຂອງພາມພາວະຣີ
ຢ່າໃຫ້ພວກຂ້າພຣະອົງມີຄວາມສົງໄສເລີຍ

[໑໐໘໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)
ພາມນັ້ນຍ່ອມໃຊ້ລີ້ນອັດໜ້າໄດ້

ມີອຸນາໂລມະຢູ່ລະຫວ່າງຄີ້ວ
ມີຄຸຍຫະຖານເຊື່ອງຢູ່ໃນຝັກ
ມານົບ ທ່ານຈົ່ງຮູ້ແນວນີ້ເທີ້ນ

[໑໐໘໐] ຊົນທັງປວງບໍ່ໄດ້ຍິນໃຜຖາມບັນຫາອັນໃດ
ໄດ້ຍິນແຕ່ບັນຫາທີ່ພຣະພຸດທະເຈົ້າຊົງຕອບ
ກໍຍິນດີໃຈປະນົມອັນຊະລີແລ້ວພາກັນຄິດໄປຕ່າງ ໆ ວ່າ

[໑໐໘໑] ໃຜນໍ ເປັນເທບ ເປັນພຣະພົມ
ຫຼືເປັນພຣະອິນຜູ້ສຸຊຳບໍດີ ເມື່ອຖາມບັນຫາດ້ວຍໃຈ
ພຣະຜູ້ມີພຣະພາກເຈົ້າຕັດຕອບບັນຫານັ້ນກັບໃຜນໍ

[໑໐໘໒] (ອະຊິຕະມານົບຂາບທູນວ່າ)
ພາມພາວະຣີຖາມເລື້ອງຫົວ
ແລະທຳເປັນເຫດໃຫ້ຫົວຕົກໄປ
ຂ້າແດ່ພຣະຜູ້ມີພຣະພາກເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຂໍພຣະອົງຕັດຕອບບັນຫານັ້ນ
ກຳຈັດຄວາມສົງໄສຂອງພວກຂ້າພຣະອົງດ້ວຍເທີ້ນ

[໑໐໘໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)
ທ່ານຈົ່ງຮູ້ເທີ້ນວ່າ ອະວິດຊາເປັນຫົວ
ວິດຊາທີ່ປະກອບດ້ວຍສັດທາ ສະຕິ ສະມາທິ ສັນທະ
ແລະວິຣິຍະ ເປັນທຳທີ່ເຮັດໃຫ້ຫົວຕົກໄປ

[໑໐໘໔] ລຳດັບນັ້ນ ອະຊິຕະມານົບມີຄວາມຍິນດີຫຼາຍລົ້ນ ສະໜັບສະໜູນແລ້ວ
ເຮັດໜັງເສືອບ່ງງບ່າ ຊົບຫົວລົງແທບພຣະບາດທັງສອງ

[໑໐໘໕] ຂ້າແດ່ພຣະອົງຜູ້ມີຣະທຸກ ຜູ້ມີພຣະຈັກຂຸ
ພາມພາວະຣີພ້ອມດ້ວຍເຫຼົ່າສິດມີຈິດເບີກບານ ດີໃຈ
ຂໍຖວາຍອະພິວາດພຣະບາດທັງສອງຂອງພຣະອົງ

[໑໐໘໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)
ຂໍພາມພາວະຣີພ້ອມດ້ວຍເຫຼົ່າສິດ
ຈົ່ງມີຄວາມສຸກ ແລະແມ່ນທ່ານເອງກໍຂໍໃຫ້ມີຄວາມສຸກ

ມີຊີວິດຢູ່ຍືນຍາວເທີ້ນ ມານົບ

[໑໐໓໗] ເຮົາໃຫ້ໂອກາດແກ່ພາມພາວະຣີ
ແກ່ທ່ານແລະມານົບທັງໝົດຖາມຂໍ້ສົງໄສທັງປວງ
ພວກທ່ານປາຖະໜາຈະຖາມບັນຫາແນວໃດແນວໜຶ່ງ ກໍຈົ່ງຖາມເທີ້ນ

[໑໐໓໘] ອະຊິຕະມານົບໄດ້ຮັບໂອກາດຈາກພຣະສຳພຸດທະເຈົ້າແລ້ວ
ນັ່ງປະຄອງອັນຊະລີ ທູນຖາມປະຖົມບັນຫາກັບພຣະຕະຖາຄົດ
ຢູ່ປາສານະກະເຈດີນັ້ນ

**ວັດຖຸກະຖາ ຈົບ**

## ໑. ອະຊິຕະມານະວະກະບັນຫາ[1]

## ວ່າດ້ວຍບັນຫາຂອງອະຊິຕະມານົບ

[໑໐໓໙] (ອະຊິຕະມານົບທູນຖາມດັ່ງນີ້)
ໂລກຖືກອັນໃດນໍຫຸ້ມຫໍ່ໄວ້
ຍ້ອນອັນໃດນໍ ໂລກຈຶ່ງບໍ່ສົດໃສ
ຂໍພຣະອົງໂຜດຕັດບອກວ່າ
ອັນໃດ ເປັນເຄື່ອງສາບທາໂລກນີ້ໄວ້
ອັນໃດນໍ ເປັນໄພໃຫຍ່ຂອງໂລກນັ້ນ

[໑໐໔໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອະຊິຕະ)
ໂລກຖືກອະວິດຊາຫຸ້ມຫໍ່ໄວ້
ໂລກບໍ່ສົດໃສຍ້ອນຄວາມຂີ້ຖີ່[2] ແລະຄວາມຜະໝາດ
ເຮົາຮຽກຄວາມຢາກວ່າ ເປັນເຄື່ອງສາບທາໂລກໄວ້
ທຸກເປັນໄພໃຫຍ່ຂອງໂລກນັ້ນ

[໑໐໔໑] (ອະຊິຕະມານົບທູນຖາມດັ່ງນີ້)
ກະແສ[3]ທັງຫຼາຍຍ່ອມໄຫຼໄປໃນບ່ອນທັງປວງ[4]
ອັນໃດເປັນເຄື່ອງກັ້ນກະແສທັງຫຼາຍ
ຂໍພຣະອົງໂຜດຕັດບອກທຳເປັນເຄື່ອງປ້ອງກັນກະແສທັງຫຼາຍ
ອັນໃດປິດກັ້ນກະແສທັງຫຼາຍໄດ້

[໑໐໔໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອະຊິຕະ)
ກະແສເຫຼົ່າໃດໃນໂລກ
ສະຕິເປັນເຄື່ອງກັ້ນກະແສເຫຼົ່ານັ້ນໄດ້
ເຮົາກ່າວທຳເຄື່ອງປ້ອງກັນກະແສທັງຫຼາຍ
ປັນຍາປິດກັ້ນກະແສເຫຼົ່ານັ້ນໄດ້

[໑໐໔໙] (ອະຊິຕະມານົບທູນຖາມດັ່ງນີ້)
ຂ້າແດ່ພຣະອົງຜູ້ນິຣະທຸກ ປັນຍາ ສະຕິ
ນາມ[໑]ແລະຮູບ[໒]ນີ້ ດັບຢູ່ໃສ
ຂ້າພຣະອົງໄດ້ທູນຖາມແລ້ວ
ຂໍພຣະອົງຕັດບອກເນື້ອຄວາມນັ້ນແກ່ຂ້າພຣະອົງດ້ວຍເທີ້ນ

[໑໐໕໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອະຊິຕະ)
ທ່ານໄດ້ຖາມບັນຫານັ້ນໃດ
ເຮົາຈະກ່າວແກ້ບັນຫານັ້ນແກ່ທ່ານ
ນາມແລະຮູບດັບບໍ່ມີສ່ວນເຫຼືອໃນບ່ອນໃດ
ນາມແລະຮູບນັ້ນດັບໄປໃນບ່ອນນັ້ນຍ້ອນວິນຍານດັບ

[໑໐໕໑] (ອະຊິຕະມານົບທູນຖາມດັ່ງນີ້)
ພຣະອະຣະຫັນຕະຂີນາສົບເຫຼົ່າໃດ ຜູ້ມີທຳທີ່ພິຈາລະນາແລ້ວ
ແລະພຣະເສຂະເຫຼົ່າໃດທີ່ມີຢູ່ຫຼວງຫຼາຍໃນບ່ອນນີ້
ຂ້າແດ່ພຣະອົງຜູ້ນິຣະທຸກ ຂ້າພຣະອົງທູນຖາມແລ້ວ
ຂໍພຣະອົງຜູ້ມີພຣະປັນຍາ ໂຜດຕັດບອກການດຳເນີນຊີວິດ
ຂອງພຣະອະຣະຫັນຕະຂີນາສົບ
ແລະພຣະເສຂະເຫຼົ່ານັ້ນດ້ວຍເທີ້ນ

[໑໐໕໒] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ພິກຂຸບໍ່ເພິ່ງປາຖະໜາຍິ່ງໃນກາມທັງຫຼາຍ
ເປັນຜູ້ມີໃຈບໍ່ຂຸ່ນມົວ ສະຫຼາດໃນທຳທັງປວງ
ມີສະຕິດຳລົງຢູ່

**ອະຊິຕະມານະວະກະບັນຫາທີ ໑ ຈົບ**

# ໘. ຕິດສະເມດເຕີຍຍະມານະວະກະປັນຫາ[1]

## ວ່າດ້ວຍປັນຫາຂອງຕິດສະເມດເຕີຍຍະມານົບ

[໑໐໔໗] (ຕິດສະເມດເຕີຍຍະມານົບທູນຖາມດັ່ງນີ້)
ໃຜຊື່ວ່າເປັນຜູ້ສັນໂດດໃນໂລກນີ້
ຄວາມຫວັ່ນໄຫວທັງຫຼາຍຍ່ອມບໍ່ມີແກ່ໃຜ
ໃຜຮູ້ແຈ້ງສ່ວນສຸດທັງ ໒ ດ້ານແລ້ວ[2]
ບໍ່ຍຶດຕິດໃນທ່າມກາງດ້ວຍມັນຕາ
ພຣະອົງຕັດຮຽກໃຜວ່າ ເປັນມະຫາບຸຣຸດ
ໃຜລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້

[໑໐໔໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດເຕີຍຍະ)
ບຸກຄົນເປັນຜູ້ມີພົມມະຈັນ[3] (ຍ້ອນເຫັນໂທດ) ໃນກາມທັງຫຼາຍ
ຊື່ວ່າ ເປັນຜູ້ສັນໂດດ ຜູ້ຄາຍຕັນຫາແລ້ວ
ມີສະຕິທຸກເມື່ອ ຮູ້ທຳທັງຫຼາຍແລ້ວດັບກິເລດໄດ້
ພິກຂຸນັ້ນຊື່ວ່າ ເປັນຜູ້ບໍ່ຫວັ່ນໄຫວ

[໑໐໔໙] ພິກຂຸນັ້ນຊື່ວ່າ ຮູ້ແຈ້ງສ່ວນສຸດທັງ ໒ ດ້ານແລ້ວ
ບໍ່ຍຶດຕິດໃນທ່າມກາງດ້ວຍມັນຕາ
ເຮົາຮຽກພິກຂຸນັ້ນວ່າ ເປັນມະຫາບຸຣຸດ
ພິກຂຸນັ້ນຊື່ວ່າ ລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້

**ຕິດສະເມດເຕີຍຍະມານະວະກະປັນຫາທີ ໒ ຈົບ**

# ໓. ປຸນນະກະມານະວະກະປັນຫາ[1]

## ວ່າດ້ວຍປັນຫາຂອງປຸນນະກະມານົບ

[໑໐໕໐] (ປຸນນະກະມານົບທູນຖາມດັ່ງນີ້)
ຂ້າພຣະອົງມີປັນຫາຈະທູນຖາມ ຈຶ່ງມາເຝົ້າພຣະອົງ
ຜູ້ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ຜູ້ມີປົກກະຕິເຫັນມູນ
ລືສີ ມະນຸຊະ ກະສັດ ແລະພາມຈຳນວນຫຼາຍໃນໂລກນີ້
ອາໄສອັນໃດ ຈຶ່ງພາກັນບູຊາຍັນ[2]ແກ່ເທວະດາທັງຫຼາຍ

ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງຕັດຕອບບັນຫາແກ່ຂ້າພຣະອົງດ້ວຍເທີ້ນ

[໑໐໕໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ)
ລືສີ ມະນຸຊະ ກະສັດ ແລະພາມຈຳນວນຫຼາຍໃນໂລກນີ້
ພາກັນບູຊາຍັນແກ່ເທວະດາທັງຫຼາຍ
ປຸນນະກະ ຊົນເຫຼົ່ານັ້ນຫວັງຄວາມເປັນແນວນີ້
ອາໄສຊະຣາຈຶ່ງພາກັນບູຊາຍັນ

[໑໐໕໔] (ປຸນນະກະມານົບທູນຖາມດັ່ງນີ້)
ລືສີ ມະນຸຊະ ກະສັດ ແລະພາມຈຳນວນຫຼາຍໃນໂລກນີ້
ພາກັນບູຊາຍັນແກ່ເທວະດາທັງຫຼາຍ
ຂ້າແດ່ພຣະຜູ້ມີພຣະພາກເຈົ້າຜູນິຣະທຸກ
ຊົນເຫຼົ່ານັ້ນເປັນຜູ້ບໍ່ຜະໝາດແລ້ວໃນການບູຊາຍັນ
ໄດ້ຂ້າມພົ້ນຊາດແລະຊະຣາແດ່ບໍ
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດຕອບບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ

[໑໐໕໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ)
ຊົນເຫຼົ່ານັ້ນຫວັງ ຊົມຊື່ນ ມຸ້ງຫວັງ ຈຶ່ງພາກັນບູຊາຍັນ
ຍ້ອນອາໄສລາບຈຶ່ງມຸ້ງຫວັງກາມ
ເຮົາກ່າວວ່າ ຊົນເຫຼົ່ານັ້ນຜູ້ປະກອບການບູຊາຍັນ
ເປັນຜູ້ກຳໜັດຍິນດີໃນພົບ
ຂ້າມພົ້ນຊາດແລະຊະຣາໄປບໍ່ໄດ້

[໑໐໕໔] (ປຸນນະກະມານົບທູນຖາມດັ່ງນີ້)
ຂ້າແດ່ພຣະອົງຜູນິຣະທຸກ
ຖ້າຊົນເຫຼົ່ານັ້ນຜູ້ປະກອບການບູຊາຍັນ
ຂ້າມພົ້ນຊາດແລະຊະຣາໄປບໍ່ໄດ້ດ້ວຍຍັນທັງຫຼາຍ
ຂ້າແດ່ພຣະອົງຜູນິຣະທຸກ ເມື່ອເປັນແນວນີ້
ໃຜນໍໃນເທວະໂລກແລະມະນຸດສາໂລກຂ້າມຊາດແລະຊະຣາໄດ້
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດຕອບບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ

[໑໐໕໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ)
ເຮົາກ່າວວ່າ ບຸກຄົນໃດບໍ່ມີຄວາມຫວັ່ນໄຫວໃນໂລກໃດ ໆ
ຍ້ອນຮູ້ແຈ້ງຝັ່ງນີ້ແລະຝັ່ງນັ້ນ[១]ໃນໂລກ
ບຸກຄົນນັ້ນເປັນຜູ້ສະງົບ ປາສະຈາກຄວັນ[២] ບໍ່ມີທຸກ
ບໍ່ມີຄວາມຫວັງ ຊື່ວ່າ ຂ້າມຊາດແລະຊະຣາໄດ້ແລ້ວ[៣]

**ປຸນນະກະມານະວະກະປັນຫາທີ ໓ ຈົບ**

## ໔. ເມດຕະຄູມານະວະກະປັນຫາ[១]

## ວ່າດ້ວຍປັນຫາຂອງເມດຕະຄູມານົບ

[໑໐໕໕] (ເມດຕະຄູມານົບທູນຖາມດັ່ງນີ້)
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມປັນຫາ
ຂໍພຣະອົງໂຜດຕັດຕອບປັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ
ຂ້າພຣະອົງຍ່ອມສຳຄັນພຣະອົງວ່າ
ຊົງເປັນຜູ້ຈົບເວທ[២] ຊົງອົບຮົມພຣະອົງແລ້ວ
ທຸກຫຼາຍຮູບແບບອັນໃດກໍຕາມໃນໂລກ
ທຸກເຫຼົ່ານີ້ເກີດມາຈາກບ່ອນໃດນໍ

[໑໐໕໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດຕະຄູ)
ທ່ານໄດ້ຖາມເຖິງແດນເກີດແຫ່ງທຸກກັບເຮົາແລ້ວ
ເຮົາຈະບອກແດນເກີດແຫ່ງທຸກນັ້ນແກ່ທ່ານຕາມທີ່ຮູ້
ທຸກຫຼາຍຮູບແບບອັນໃດກໍຕາມໃນໂລກນີ້
ລ້ວນເກີດມາແຕ່ອຸປະທິ[១]ເປັນຕົ້ນເຫດ

[໑໐໕໗] ຜູ້ໃດແລບໍ່ມີປັນຍາ ກໍ່ອຸປະທິ
ຜູ້ນັ້ນຈັດວ່າ ເປັນຄົນຈ້ຳ ຍ່ອມເຂົ້າເຖິງທຸກຢູ່ປະຈຳ ໆ
ຍ້ອນແນວນັ້ນ ບຸກຄົນຮູ້ແຈ້ງຢູ່
ເປັນຜູ້ມີປົກກະຕິພິຈາລະນາເຫັນທຸກວ່າ ມີຊາດເປັນແດນເກີດ
ບໍ່ຄວນກໍ່ອຸປະທິ

[໑໐໕໘] (ເມດຕະຄູມານົບທູນຖາມດັ່ງນີ້)
ພວກຂ້າພຣະອົງໄດ້ທູນຖາມປັນຫາໃດກັບພຣະອົງ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບບັນຫານັ້ນແກ່ພວກຂ້າພຣະອົງແລ້ວ
ຂ້າພຣະອົງຂໍທູນຖາມບັນຫາອື່ນຕໍ່ໄປ
ຂໍພຣະອົງໂຜດຕັດຕອບບັນຫານັ້ນດ້ວຍເທີ້ນ
ນັກປາດທັງຫຼາຍຈະຂ້າມໂອຄະ ຊາດ ຊະຣາ
ໂສກະ ແລະປະຣິເທວະໄດ້ແນວໃດນໍ
ພຣະອົງຜູ້ເປັນພຣະມຸນີ ຂໍໂຜດຕັດຕອບບັນຫານັ້ນ
ແກ່ຂ້າພຣະອົງໃຫ້ແຈ່ມແຈ້ງດ້ວຍເທີ້ນ
ຍ້ອນທຳນັ້ນ ພຣະອົງຊົງຮູ້ແຈ້ງແລ້ວ

[໑໐໖໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ ເມດຕະຄູ)
ບຸກຄົນຮູ້ແຈ້ງທຳ໑ໃດແລ້ວ ມີສະຕິ ທ່ຽວໄປຢູ່
ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາ ໃນໂລກໄດ້
ເຮົາຈັກກ່າວທຳທີ່ປະຈັກດ້ວຍຕົນເອງ
ໃນທຳທີ່ເຮົາເຫັນແລ້ວແກ່ທ່ານ

[໑໐໖໑] (ເມດຕະຄູມານົບຂາບທູນດັ່ງນີ້)
ຂ້າແດ່ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພຣະອົງພໍໃຈທຳອັນສູງສຸດນັ້ນທີ່ບຸກຄົນຮູ້ແຈ້ງແລ້ວ
ມີສະຕິ ທ່ຽວໄປຢູ່ ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາ ໃນໂລກໄດ້

[໑໐໖໒] (ພຣະຜູ້ມີພຣະພາກເຈົ້າຕັດວ່າ ເມດຕະຄູ)
ທ່ານຮູ້ແຈ້ງທຳແນວໃດແນວໜຶ່ງ
ເຊິ່ງເປັນທຳຊັ້ນສູງ ຊັ້ນຕ່ຳ ແລະຊັ້ນກາງ
ທ່ານຈົ່ງບັນເທົາຄວາມເພີດເພີນ ຄວາມຖືໝັ້ນ
ແລະວິນຍານໃນທຳເຫຼົ່ານັ້ນສາ
ບໍ່ເພິ່ງຕັ້ງຢູ່ໃນພົບ໑

[໑໐໖໓] ພິກຂຸຜູ້ມີປົກກະຕິຢູ່ແນວນີ້ ມີສະຕິ ບໍ່ຜະໝາດ ຮູ້ແຈ້ງ
ລະຄວາມຢຶດຖືວ່າເປັນຂອງເຮົາແລ້ວທ່ຽວໄປຢູ່
ເພິ່ງລະຊາດ ຊະຣາ ໂສກະ ແລະປະຣິເທວະ
ອັນເປັນທຸກໃນອັດຕະພາບນີ້ໄດ້ແນ່ນອນ

[໑໐໖໔] (ເມດຕະຄູມານົບຂາບທູນດັ່ງນີ້)
ຂ້າພຣະອົງພໍໃຈພຣະວາຈານີ້ຂອງພຣະອົງ

ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຂ້າແດ່ພຣະໂຄດົມ
ທໍາທີ່ປາສະຈາກອຸປະທິ ພຣະອົງຕັດໄວ້ດີແລ້ວ
ພຣະຜູ້ມີພຣະພາກເຈົ້າຊົງລະທຸກໄດ້ແລ້ວເປັນແນ່
ຍ້ອນທໍານີ້ ພຣະອົງຊົງຮູ້ແຈ້ງແລ້ວ

[໑໐໘໔] ພຣະອົງຜູ້ເປັນພຣະມຸນີຕັດສອນຊົນເຫຼົ່າໃດບໍ່ຢຸດຢ່ອນ
ແມ່ນຊົນເຫຼົ່ານັ້ນກໍເພິ່ງລະທຸກໄດ້ເປັນແນ່
ຍ້ອນແນວນັ້ນ ຂ້າພຣະອົງມາພົບພຣະຜູ້ມີພຣະພາກເຈົ້າຜູ້ນາຄະ
ຂໍນະມັດສະການພຣະອົງ (ໂດຍຫວັງວ່າ) ພຣະຜູ້ມີພຣະພາກເຈົ້າ
ເພິ່ງຕັດສອນຂ້າພຣະອົງບໍ່ຢຸດຢ່ອນແດ່

[໑໐໘໘] (ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)
ບຸກຄົນທີ່ທ່ານຮູ້ຈັກວ່າເປັນພາມຜູ້ຈົບເວດ
ບໍ່ມີເຄື່ອງກັງວົນ ບໍ່ຂ້ອງໃນກາມະພົບ
ຂ້າມໂອຄະໄດ້ແລ້ວໂດຍແທ້ ແລະເປັນຜູ້ຂ້າມເຖິງຝັ່ງ[໒]
ບໍ່ມີກິເລດຄືຕະປູຕຶງໃຈ ໝົດຄວາມສົງໄສແລ້ວ

[໑໐໘໗] ນໍຣະຊົນໃດໃນບ່ອນນີ້ເປັນຜູ້ມີປັນຍາ ຈົບເວດ
ກໍາຈັດກິເລດເຄື່ອງຂ້ອງໃນພົບນ້ອຍພົບໃຫຍ່ນີ້ໄດ້ແລ້ວ
ນໍຣະຊົນນັ້ນເປັນຜູ້ປາສະຈາກຕັນຫາແລ້ວ ບໍ່ມີທຸກ ບໍ່ມີຄວາມຫວັງ
ເຮົາກ່າວວ່າ ນໍຣະຊົນນັ້ນຂ້າມພົ້ນຊາດແລະຊະຣາໄດ້ແລ້ວ

**ເມດຕະຄູມານະວະກະປັນຫາທີ ໔ ຈົບ**

## ໕. ໂທຕະກະມານະວະກະປັນຫາ[໑]

## ວ່າດ້ວຍປັນຫາຂອງໂທຕະກະມານົບ

[໑໐໘໙] (ໂທຕະກະມານົບທູນຖາມດັ່ງນີ້)
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມພຣະອົງ
ຂໍພຣະອົງໂຜດຕັດຕອບປັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ
ຂ້າແດ່ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພຣະອົງມຸ້ງຫວັງຈະຮັບຟັງພຣະວາຈາຂອງພຣະອົງຢ່າງຍິ່ງ
ບຸກຄົນຟັງພຣະສຸຣະສຽງຂອງພຣະອົງແລ້ວ

ສຶກສາທຳ[a]ເປັນເຫດດັບກິເລດເພື່ອຕົນ

[໑໐໗໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ)
ຖ້າເປັນແນວນັ້ນ ທ່ານຜູ້ມີປັນຍາຮັກສາຕົນ
ມີສະຕິ ຈົ່ງເຮັດຄວາມພຽນໃນບ່ອນນີ້ແລ
ບຸກຄົນໄດ້ຟັງສຽງຈາກບ່ອນນີ້ແລ້ວ
ເພິ່ງສຶກສາທຳເປັນເຫດດັບກິເລດເພື່ອຕົນ

[໑໐໘໐] (ໂທຕະກະມານົບທູນຖາມດັ່ງນີ້)
ຂ້າພຣະອົງເຫັນພຣະອົງຜູ້ບໍ່ມີກິເລດເຄື່ອງກັງວົນ
ເປັນພາມ ສະເດັດຈາຣິກຢູ່ໃນເທວະໂລກແລະມະນຸດສາໂລກ
ຂ້າແດ່ພຣະອົງຜູ້ມີສະມັນຕະຈັກຂຸ
ຍ້ອນເຫດນັ້ນ ຂ້າພຣະອົງຂໍນະມັດສະການພຣະອົງ
ຂ້າແດ່ພຣະອົງຜູ້ສັກກະ[9] ຂໍພຣະອົງໂຜດປົດເປື້ອງຂ້າພຣະອົງ
ຈາກຄວາມສົງໄສທັງຫຼາຍເທີ້ນ

[໑໐໘໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ໂທຕະກະ ເຮົາບໍ່ສາມາດປົດເປື້ອງໃຜ ໆ
ຜູ້ມີຄວາມສົງໄສໃນໂລກໄດ້
ແຕ່ທ່ານເມື່ອຮູ້ແຈ້ງທຳອັນປະເສີດ
ກໍຈະຂ້າມໂອຄະນີ້ໄດ້ເອງດ້ວຍປະການດັ່ງນີ້

[໑໐໘໔] (ໂທຕະກະມານົບຂາບທູນດັ່ງນີ້)
ຂ້າແດ່ພຣະອົງຜູ້ປະເສີດ
ຂໍພຣະອົງຊົງພຣະກະລຸນາຕັດສອນວິເວກທຳ
ທີ່ຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້
ແລະໂດຍວິທີທີ່ຂ້າພຣະອົງບໍ່ຂັດຂ້ອງຄືອາກາດ
ຂ້າພຣະອົງຈະເພິ່ງສະງົບຢູ່ໃນບ່ອນນີ້ແລ
ເປັນຜູ້ບໍ່ອາໄສ[a] ທ່ຽວໄປຢູ່

[໑໐໘໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ)
ບຸກຄົນຜູ້ຮູ້ແຈ້ງຄວາມສະງົບໃດແລ້ວ ມີສະຕິ ທ່ຽວໄປຢູ່
ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາ ໃນໂລກໄດ້
ເຮົາຈັກກ່າວຄວາມສະງົບນັ້ນທີ່ເຮົາຮູ້ປະຈັກດ້ວຍຕົນເອງ

ໃນທຳທີ່ເຮົາເຫັນແລ້ວແກ່ທ່ານ

[໑໐໗໔] (ໂທຕະກະມານົບຂາບທູນດັ່ງນີ້)
ຂ້າແດ່ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພຣະອົງພໍໃຈຄວາມສະງົບອັນສູງສຸດນັ້ນ
ທີ່ບຸກຄົນຮູ້ແຈ້ງແລ້ວ ມີສະຕິ ທ່ຽວໄປຢູ່
ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາ ໃນໂລກໄດ້

[໑໐໗໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ)
ທ່ານຮູ້ແຈ້ງທຳແນວໃດແນວໜຶ່ງ
ເຊິ່ງເປັນທຳຊັ້ນສູງ ຊັ້ນຕ່ຳ ແລະຊັ້ນກາງ
ທ່ານຮູ້ແຈ້ງທຳນັ້ນວ່າ ເປັນເຄື່ອງຂ້ອງໃນໂລກແລ້ວ
ຢ່າໄດ້ກໍ່ຕັນຫາເພື່ອພົບນ້ອຍແລະພົບໃຫຍ່ເລີຍ

**ໂທຕະກະມານະວະກະປັນຫາທີ ໕ ຈົບ**

## ໖. ອຸປະສີວະມານະວະກະປັນຫາ[1]

## ວ່າດ້ວຍປັນຫາຂອງອຸປະສີວະມານົບ

[໑໐໗໖] (ອຸປະສີວະມານົບທູນຖາມດັ່ງນີ້)
ຂ້າແດ່ພຣະອົງຜູ້ສັກກະ ຂ້າພຣະອົງຜູ້ດຽວ
ບໍ່ໄດ້ອາໄສ (ຜູ້ໃດ ຫຼື ສິ່ງໃດ ໆ)
ຈຶ່ງບໍ່ສາມາດຂ້າມຫ້ວງກິເລດອັນຍິ່ງໃຫຍ່[໒]ໄດ້
ຂ້າແດ່ພຣະອົງຜູ້ມີສະມັນຕະຈັກຂຸ
ຂໍພຣະອົງໂຜດຕັດບອກອາລົມ
ທີ່ຂ້າພຣະອົງໄດ້ອາໄສແລ້ວ ເພິ່ງຂ້າມຫ້ວງກິເລດນີ້ໄດ້

[໑໐໗໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)
ທ່ານຈົ່ງມີສະຕິ ເພ່ງພິຈາລະນາອາກິນຈັນຍາຍະຕະນະສະມາບັດ
ຍຶດເອົາເປັນອາລົມວ່າ ບໍ່ມີອັນໃດ ດັ່ງນີ້ແລ້ວກໍຈະຂ້າມຫ້ວງກິເລດໄດ້
ທ່ານຈົ່ງລະກາມທັງຫຼາຍ ເປັນຜູ້ງົດເວັ້ນຈາກຄວາມສົງໄສທັງຫຼາຍ
ພິຈາລະນາເບິ່ງຄວາມສິ້ນຕັນຫາທັງຄືນທັງວັນ

[໑໐໗໗]　(ອຸປະສີວະມານົບທູນຖາມດັ່ງນີ້)
ບຸກຄົນໃດເປັນຜູ້ປາສະຈາກຣາຄະໃນກາມທັງປວງ
ລະສະມາບັດອື່ນ໋ອາໄສອາກິນຈັນຍາຍະຕະນະສະມາບັດ
ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ໌
ບຸກຄົນນັ້ນບໍ່ຫວັ່ນໄຫວ ດຳລົງຢູ່
ໃນພົມມະໂລກຊັ້ນອາກິນຈັນຍາຍະຕະນະນັ້ນໄດ້ບໍ

[໑໐໗໘]　(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)
ບຸກຄົນໃດເປັນຜູ້ປາສະຈາກຣາຄະໃນກາມທັງປວງ
ລະສະມາບັດອື່ນ ອາໄສອາກິນຈັນຍາຍະຕະນະສະມາບັດ
ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ
ບຸກຄົນນັ້ນບໍ່ຫວັ່ນໄຫວ
ດຳລົງຢູ່ໃນພົມມະໂລກຊັ້ນອາກິນຈັນຍາຍະຕະນະນັ້ນໄດ້

[໑໐໗໙]　(ອຸປະສີວະມານົບທູນຖາມດັ່ງນີ້)
ຂ້າແດ່ພຣະອົງຜູ້ມີສະມັນຕະຈັກຂຸ
ຖ້າບຸກຄົນນັ້ນບໍ່ຫວັ່ນໄຫວ ດຳລົງຢູ່ໃນພົມມະໂລກນັ້ນດົນນັບປີບໍ່ໄດ້ແລ້ວ
ບຸກຄົນນັ້ນເປັນຜູ້ລຸດພົ້ນແລ້ວ
ມີຄວາມສະງົບເຢັນຢູ່ໃນພົມມະໂລກນັ້ນ ໆ ແລບໍ
ຫຼືວ່າວິນຍານຂອງບຸກຄົນນັ້ນຈະເພິ່ງຈຸຕິອີກ

[໑໐໘໐]　(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)
ແປວໄຟຖືກກຳລັງລົມພັດໄປ
ຍ່ອມດັບ ກຳນົດບໍ່ໄດ້ ສັນໃດ
ມຸນີພົ້ນແລ້ວຈາກນາມກາຍ ຍ່ອມດັບໄປ
ກຳນົດບໍ່ໄດ້ ສັນນັ້ນ

[໑໐໘໑]　(ທ່ານອຸປະສີວະທູນຖາມດັ່ງນີ້)
ມຸນີນັ້ນເຖິງຄວາມສະຫຼາຍໄປ ຫຼືວ່າບໍ່ມີ
ຫຼືວ່າບໍ່ແຕກທຳລາຍ ຍ້ອນມີຄວາມແນ່ແທ້
ພຣະອົງຜູ້ເປັນພຣະມຸນີ ຂໍໂຜດຕັດຕອບບັນຫານັ້ນ
ແກ່ຂ້າພຣະອົງໃຫ້ແຈ່ມແຈ້ງດ້ວຍເທີ້ນ
ຍ້ອນທຳນັ້ນພຣະອົງຊົງຮູ້ແຈ້ງແລ້ວ

[໑໐໗໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)
ມຸນີຜູ້ເຖິງຄວາມສະຫຼາຍໄປຍ່ອມບໍ່ມີ (ອັນໃດ)ເປັນປະມານ
ຊົນທັງຫຼາຍເພິ່ງວ່າກ່າວມຸນີນັ້ນດ້ວຍກິເລດໃດ
ກິເລດນັ້ນຍ່ອມບໍ່ມີແກ່ມຸນີນັ້ນ
(ຍ້ອນ)ເມື່ອມຸນີນັ້ນຖອນທຳ[໑]ທັງປວງໄດ້ເດັດຂາດແລ້ວ
ແມ່ນຄັນລອງແຫ່ງວາທະທັງປວງທ່ານກໍຖອນໄດ້ເດັດຂາດແລ້ວ

**ອຸປະສີວະມານະວະກະປັນຫາທີ ໖ ຈົບ**

## ກ. ນັນທະມານະວະກະປັນຫາ[໒]

## ວ່າດ້ວຍປັນຫາຂອງນັນທະມານົບ

[໑໐໗໔] (ນັນທະມານົບທູນຖາມດັ່ງນີ້)
ຊົນທັງຫຼາຍກ່າວວ່າ ມຸນີທັງຫຼາຍມີຢູ່ໃນໂລກ
ຄຳກ່າວນີ້ນັ້ນເປັນແນວໃດ?
ຊົນທັງຫຼາຍຍ່ອມຮຽກບຸກຄົນຜູ້ເປັນໄປນຳຍານ[໓]
ຫຼືວ່າຍ່ອມຮຽກບຸກຄົນຜູ້ເປັນໄປນຳຄວາມເປັນຢູ່[໔]ວ່າ ເປັນມຸນີ

[໑໐໗໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ນັນທະ ຊົນທັງຫຼາຍຜູ້ສະຫຼາດໃນໂລກນີ້
ຍ່ອມບໍ່ຮຽກບຸກຄົນວ່າ ເປັນມຸນີ
ຍ້ອນໄດ້ເຫັນ ໄດ້ຟັງແລະໄດ້ຮູ້
ເຮົາຮຽກເຫຼົ່າຊົນຜູ້ກຳຈັດເສນາມານໄດ້ແລ້ວ
ຜູ້ບໍ່ມີທຸກ ບໍ່ມີຄວາມຫວັງ ທ່ຽວຈາຣິກຢູ່ວ່າ ເປັນມຸນີ

[໑໐໗໖] (ນັນທະມານົບທູນຖາມດັ່ງນີ້)
ສະມະນະພາມລາງພວກຍ່ອມກ່າວຄວາມບໍລິສຸດ
ຍ້ອນຮູບທີ່ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່
ຍ້ອນສີນແລະຂໍ້ວັດປະຕິບັດແດ່ ຍ້ອນພິທີຕ່າງ ໆ ແດ່
ຂ້າແດ່ພຣະຜູ້ມີພຣະພາກເຈົ້າຜູ້ນິຣະທຸກ
ສະມະນະພາມພວກນັ້ນຜູ້ປະພຶດຕົນເຄັ່ງຄັດໃນຫຼັກການຂອງຕົນນັ້ນ
ຂ້າມຊາດແລະຊະຣາໄດ້ແດ່ບໍ

ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດຕອບບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ

[໑໐໙໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນັນທະ)
ສະມະນະພາມລາງພວກກ່າວຄວາມບໍລິສຸດ
ຍ້ອນຮູບທີ່ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນສີນແລະຂໍ້ວັດປະຕິບັດແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນພິທີຕ່າງ ໆ ແດ່
ສະມະນະພາມພວກນັ້ນປະພຶດຕົນເຄັ່ງຄັດ
ໃນຫຼັກການຂອງຕົນນັ້ນກໍຈິງ
ແຕ່ເຮົາກ່າວວ່າ ພວກເຂົາຍັງຂ້າມຊາດແລະຊະຣາໄປບໍ່ໄດ້

[໑໐໙໙] (ນັນທະມານົບທູນຖາມດັ່ງນີ້)
ສະມະນະພາມລາງພວກຍ່ອມກ່າວຄວາມບໍລິສຸດ
ຍ້ອນຮູບທີ່ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນສີນແລະຂໍ້ວັດປະຕິບັດແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນພິທີຕ່າງ ໆ ແດ່
ຫາກພຣະອົງຜູ້ເປັນພຣະມຸນີຕັດວ່າ
ສະມະນະພາມພວກນັ້ນຍັງຂ້າມຫ້ວງກິເລດບໍ່ໄດ້
ຂ້າແດ່ພຣະອົງຜູນິຣະທຸກ ເມື່ອເປັນແນວນັ້ນ
ໃຜນໍໃນເທວະໂລກແລະມະນຸດສາໂລກ
ຊື່ວ່າຂ້າມຊາດແລະຊະຣາໄປໄດ້
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດຕອບບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ

[໑໐໙໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນັນທະ)

ເຮົາຍ່ອມບໍ່ກ່າວວ່າ ສະມະນະພາມທັງໝົດ
ຖືກຊາດແລະຊະຣາໂອບລ້ອມ
ນໍຣະຊົນເຫຼົ່າໃດໃນໂລກນີ້ລະຮູບທີ່ເຫັນ ສຽງທີ່ໄດ້ຍິນ
ອາລົມທີ່ໄດ້ຮັບຮູ້ ຫຼືສີນແລະຂໍ້ວັດປະຕິບັດໄດ້ທັງໝົດ
ທັງລະພິທີຕ່າງ ໆ ທັງປວງ
ກໍານົດຮູ້ຕັນຫາໄດ້ແລ້ວ[๑] ເປັນຜູ້ໝົດອາສະວະ

ເຮົາກ່າວວ່າ ນໍຣະຊົນເຫຼົ່ານັ້ນແລຊື່ວ່າ ຂ້າມຫ້ວງກິເລດໄດ້ແລ້ວ

[໑໐໙໐] (ນັນທະມານົບຂາບທູນດັ່ງນີ້)
ຂ້າພຣະອົງພໍໃຈພຣະດຳຣັດນີ້ຂອງພຣະອົງ
ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າແດ່ພຣະໂຄດົມ ນິບພານທີ່ປາສະຈາກອຸປະທິ ພຣະອົງຕັດໄວ້ດີແລ້ວ
ນໍຣະຊົນເຫຼົ່າໃດໃນໂລກນີ້ລະຮູບທີ່ເຫັນ ສຽງທີ່ໄດ້ຍິນ
ອາລົມທີ່ໄດ້ຮັບຮູ້ ຫຼືສິນແລະຂໍ້ວັດປະຕິບັດໄດ້ທັງໝົດ
ທັງລະພິທີຕ່າງ ໆ ທັງປວງ
ກຳນົດຮູ້ຕັນຫາໄດ້ແລ້ວ ເປັນຜູ້ໝົດອາສະວະ
ແມ່ນຂ້າພຣະອົງກໍກ່າວວ່າ ນໍຣະຊົນເຫຼົ່ານັ້ນຊື່ວ່າ ຂ້າມຫ້ວງກິເລດໄດ້

**ນັນທະມານະວະກະປັນຫາທີ ໗ ຈົບ**

## ๘. ເຫມະກະມານະວະກະປັນຫາ[1]

## ວ່າດ້ວຍປັນຫາຂອງເຫມະກະມານົບ

[໑໐໙໑] (ເຫມະກະມານົບທູນຖາມດັ່ງນີ້)
ກ່ອນແຕ່ສາດສະໜາຂອງພຣະໂຄດົມ
ອາຈານເຈົ້າລັດທິເຫຼົ່າໃດເຄີຍຕອບແກ່ຂ້າພຣະອົງວ່າ
ເຫດນີ້ໄດ້ເປັນມາແລ້ວແນວນີ້ ຈັກເປັນແນວນີ້
ຄຳຕອບທັງໝົດ ເປັນຄຳທີ່ເຊື່ອສືບຕໍ່ກັນມາ
ຄຳຕອບທັງໝົດນັ້ນ ມີແຕ່ຈະເຮັດໃຫ້ນຶກໄປຕ່າງ ໆ
ຂ້າພຣະອົງຈຶ່ງບໍ່ຍິນດີໃນຄຳຕອບນັ້ນ

[໑໐໙໘] ຂ້າແດ່ພຣະມຸນີ ບຸກຄົນຮູ້ແຈ້ງທຳໃດແລ້ວ ມີສະຕິ ທ່ຽວໄປຢູ່
ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາ ໃນໂລກໄດ້
ຂໍພຣະອົງໂຜດຕັດບອກທຳ (ນັ້ນ)ທີ່ເປັນເຄື່ອງກຳຈັດຕັນຫາ
ແກ່ຂ້າພຣະອົງດ້ວຍເທີ້ນ

[໑໐໙໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ເຫມະກະ ນິບພານບົດອັນບໍ່ຜັນແປ
ເຄື່ອງບັນເທົາສັນທະຣາຄະ

ໃນປິຍະຮູບທັງຫຼາຍທີ່ເຫັນ ທີ່ໄດ້ຍິນ ແລະທີ່ໄດ້ຮັບຮູ້ໃນໂລກນີ້

[໑໐໙໔] ຊົນເຫຼົ່າໃດມີສະຕິ ຮູ້ນິບພານນັ້ນແລ້ວ
ເຫັນທຳ ດັບກິເລດໄດ້ແລ້ວ
ຊົນເຫຼົ່ານັ້ນເປັນຜູ້ສະງົບທຸກເມື່ອ
ເປັນຜູ້ຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາ ໃນໂລກໄດ້ແລ້ວ

**ເຫມະກະມານະວະກະປັນຫາທີ ໗ ຈົບ**

## ໙. ໂຕເທີຍຍະມານະວະກະປັນຫາ[໑]
## ວ່າດ້ວຍປັນຫາຂອງໂຕເທີຍຍະມານົບ

[໑໐໙໕] (ໂຕເທີຍຍະມານົບທູນຖາມດັ່ງນີ້)
ກາມທັງຫຼາຍບໍ່ຢູ່ໃນບຸກຄົນໃດ
ຕັນຫາບໍ່ມີແກ່ບຸກຄົນໃດ
ແລະບຸກຄົນໃດຂ້າມພົ້ນຈາກຄວາມສົງໄສໄດ້ແລ້ວ
ວິໂມກຂອງບຸກຄົນນັ້ນເປັນແນວໃດ

[໑໐໙໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂຕເທີຍຍະ)
ກາມທັງຫຼາຍບໍ່ຢູ່ໃນບຸກຄົນໃດ
ຕັນຫາບໍ່ມີແກ່ບຸກຄົນໃດ
ແລະບຸກຄົນໃດຂ້າມພົ້ນຈາກຄວາມສົງໄສໄດ້ແລ້ວ
ວິໂມກອື່ນຂອງບຸກຄົນນັ້ນບໍ່ມີ

[໑໐໙໗] (ໂຕເທີຍຍະມານົບທູນຖາມດັ່ງນີ້)
ບຸກຄົນນັ້ນເປັນຜູ້ບໍ່ມີຄວາມຫວັງ ຫຼືວ່າຍັງຫວັງຢູ່
ບຸກຄົນນັ້ນເປັນຜູ້ມີປັນຍາ ຫຼືວ່າຍັງມີຄວາມດຳຣິດ້ວຍປັນຍາ
ຂ້າແດ່ ພຣະອົງຜູ້ສັກກະ ຂ້າພຣະອົງຈະເພິ່ງຮູ້ຈັກພຣະມຸນີໄດ້ແນວໃດ
ຂ້າແດ່ພຣະອົງຜູ້ມີສະມັນຕະຈັກຂຸ
ຂໍພຣະອົງໂຜດຕັດຕອບປັນຫານັ້ນແກ່ຂ້າພຣະອົງ
ໃຫ້ແຈ່ມແຈ້ງດ້ວຍເທີ້ນ

[໑໐໙໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ບຸກຄົນນັ້ນເປັນຜູ້ບໍ່ມີຄວາມຫວັງທັງບໍ່ຫວັງ

ບຸກຄົນນັ້ນເປັນຜູ້ມີປັນຍາ ແຕ່ບໍ່ດໍາຣິດ້ວຍປັນຍາ
ໂຕເທີຍຍະ ບຸກຄົນຈົ່ງຮູ້ຈັກບຸກຄົນຜູ້ບໍ່ມີກິເລດເຄື່ອງກັງວົນ
ຜູ້ບໍ່ຂ້ອງໃນກາມແລະພົບວ່າ ເປັນມຸນີແນວນີ້

**ໂຕເທີຍຍະມານະວະກະປັນຫາທີ ໗ ຈົບ**

## ໑໐. ກັປປະມານະວະກະປັນຫາ[๑]
## ວ່າດ້ວຍປັນຫາຂອງກັປປະມານົບ

[໑໐໙໙] (ກັປປະມານົບທູນຖາມດັ່ງນີ້)
ຂ້າແດ່ ພຣະອົງຜູ້ນິຣະທຸກ
ຂໍພຣະອົງໂຜດຕັດບອກທີ່ເພິ່ງຂອງສັດທັງຫຼາຍ
ຜູ້ດໍາລົງຢູ່ທ່າມກາງສະ[๔]
ຜູ້ຖືກຊະຣາແລະມັດຈຸຣາດຄອບງໍາ
ໃນຂະນະເກີດແມ່ນໍ້າອັນເປັນມະຫັນຕະໄພ
ອັນໜຶ່ງ ຂໍພຣະອົງໂຜດຕັດບອກທີ່ເພິ່ງ
ໂດຍວິທີທີ່ທຸກນີ້ຈຶ່ງຈະບໍ່ມີແກ່ຂ້າພຣະອົງອີກ

[໑໑໐໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ກັປປະ)
ເຮົາຈະບອກທີ່ເພິ່ງຂອງສັດທັງຫຼາຍ
ຜູ້ດໍາລົງຢູ່ທ່າມກາງສະ
ຜູ້ຖືກຊະຣາແລະມັດຈຸຣາດຄອບງໍາ
ໃນຂະນະເກີດແມ່ນໍ້າອັນເປັນມະຫັນຕະໄພ
ເຮົາຈະບອກທີ່ເພິ່ງແກ່ທ່ານອີກ

[໑໑໐໑] ເຮົາຮຽກນິບພານເຊິ່ງບໍ່ມີກິເລດເຄື່ອງກັງວົນ
ບໍ່ມີເຄື່ອງຢຶດໝັ້ນນີ້ນັ້ນວ່າ ເປັນບ່ອນເພິ່ງອັນບໍ່ມີທີ່ເພິ່ງອື່ນຍິ່ງກວ່າ
(ຍ້ອນ)ນິບພານເປັນທີ່ສິ້ນສຸດໄປແຫ່ງຊະຣາແລະມັດຈຸຣາດ

[໑໑໐໒] ຊົນເຫຼົ່າໃດມີສະຕິ ຮູ້ນິບພານນັ້ນແລ້ວ
ເຫັນທໍາ ດັບກິເລດໄດ້ແລ້ວ
ຊົນເຫຼົ່ານັ້ນກໍບໍ່ໄປຕາມອໍານາດຂອງມານ ບໍ່ໄປບໍາລຸງມານ

**ກັປປະມານະວະກະປັນຫາທີ ໑໐ ຈົບ**

# ໑໑. ຊະຕຸກັນນິມານະວະກະປັນຫາ[1]

## ວ່າດ້ວຍປັນຫາຂອງຊະຕຸກັນນິມານົບ

[໑໑໐໓] (ຊະຕຸກັນນິມານົບທູນຖາມດັ່ງນີ້)
ຂ້າແດ່ພຣະວີຣະ ຂ້າພຣະອົງໄດ້ຂ່າວວ່າ
ພຣະອົງບໍ່ມີຄວາມຕ້ອງການກາມ ລ່ວງພົ້ນຫ້ວງກິເລດ
ຈຶ່ງມາເຝົ້າເພື່ອທູນຖາມພຣະອົງຜູ້ບໍ່ມີກາມ
ຂ້າແດ່ພຣະສະຫັດສະເນດ[2] ຂໍພຣະອົງໂຜດຕັດບອກສັນຕິບົດ
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກທຳ
ອັນແທ້ຈິງນັ້ນແກ່ຂ້າພຣະອົງດ້ວຍເທີ້ນ

[໑໑໐໔] ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງຄອບງຳການທັງຫຼາຍດ້ວຍພຣະອຳນາດ
ເຄື່ອນໄຫວ (ອິລິຍາບົດ)ຢູ່
ຄືດວງອາທິດມີແສງສະຫວ່າງສ່ອງແສງປົກຄຸມທົ່ວປະຖະພີ
ພຣະອົງຜູ້ມີພຣະປັນຍາອັນເຕັມປ່ຽມ
ຂໍພຣະອົງໂຜດຕັດບອກທຳເປັນເຄື່ອງລະຊາດ ແລະຊະຣາໃນໂລກນີ້
ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງ ແກ່ຂ້າພຣະອົງຜູ້ມີປັນຍາໜ້ອຍດ້ວຍເທີ້ນ

[໑໑໐໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຊະຕຸກັນນິ)
ທ່ານຈົ່ງກຳຈັດຄວາມຕິດໃຈໃນກາມທັງຫຼາຍສາ
ເຫັນເນກຂຳມະ[3]ໂດຍຄວາມເປັນທຳກະເສມແລ້ວ
ຄວນກຳຈັດກິເລດເຄື່ອງກັງວົນທີ່ຢຶດຖື
ຫຼືວ່າກິເລດເຄື່ອງກັງວົນຢ່າໄດ້ມີແກ່ທ່ານ

[໑໑໐໖] ທ່ານຈົ່ງເຮັດກິເລດທີ່ຜາຣົບສັງຂານ

ໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ
ກິເລດເຄື່ອງກັງວົນທີ່ຜາຣົບສັງຂານ
ໃນສ່ວນພາຍຫຼັງຢ່າໄດ້ມີແກ່ທ່ານ
ຖ້າທ່ານຈັກບໍ່ຖືສັງຂານໃນສ່ວນທ່າມກາງໄວ້
ກໍຈັກເປັນຜູ້ເຂົ້າໄປສະງົບທ່ຽວໄປ

[໑໑໐໗] ພາມ ອາສະວະທັງຫຼາຍອັນເປັນເຫດໃຫ້ເຖິງອຳນາດແຫ່ງມັດຈຸ

ບໍ່ມີແກ່ບຸກຄົນນັ້ນ ຜູ້ຄາຍຄວາມຕິດໃຈໃນນາມຮູບ
ໂດຍປະການທັງປວງ

**ຂະຕຸກັນນິມານະວະກະບັນຫາທີ 11 ຈົບ**

# ໑໘. ພັດທະຣາວຸທະມານະວະກະບັນຫາ[1]

## ວ່າດ້ວຍບັນຫາຂອງພັດທະຣາວຸທະມານົບ

[໑໑໐໗] (ພັດທະຣາວຸທະມານົບທູນຖາມດັ່ງນີ້)
ຂ້າພຣະອົງຂໍທູນອາຣາດທະນາພຣະອົງ
ຜູ້ລະແມ່ນ້ຳຄືອາໄລໄດ້ ຕັດຕັນຫາໄດ້
ບໍ່ມີຕັນຫາເຫດໃຫ຺້ຫວັ່ນໄຫວ ຊົງລະຄວາມເພີດເພີນໄດ້
ຂ້າມຫ້ວງກິເລດໄດ້ ລຸດພົ້ນແລ້ວ
ລະການກຳນົດໄດ້ ມີພຣະປັນຍາດີ
ຊົນທັງຫຼາຍເມື່ອໄດ້ຟັງພຣະດຳຣັດຂອງພຣະອົງຜູ້ນາຄະແລ້ວ
ຈຶ່ງກັບໄປຈາກບ່ອນນີ້

[໑໑໐໘] ຂ້າແດ່ພຣະວີຣະ ຊົນຕ່າງ ໆ ຈາກຊົນນະບົດທັງຫຼາຍ
ມາຊຸມນຸມກັນ (ໃນບ່ອນນີ້)
ຫວັງເປັນຢ່າງຍິ່ງທີ່ຈະໄດ້ຟັງພຣະດຳຣັດຂອງພຣະອົງ
ຂໍພຣະອົງໂຜດຕັດຕອບບັນຫາ
ແກ່ຊົນເຫຼົ່ານັ້ນໃຫ້ແຈ່ມແຈ້ງດ້ວຍເທີ້ນ
ຍ້ອນວ່າທຳນີ້ພຣະອົງຊົງຮູ້ແຈ້ງແລ້ວ

[໑໑໑໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພັດທະຣາວຸທະ)
ນໍຣະຊົນຄວນທຳລາຍເຄື່ອງຢຶດໝັ້ນ[2]ທັງປວງ
ທັງຊັ້ນສູງ ຊັ້ນຕ່ຳ ແລະຊັ້ນກາງ
ຍ້ອນວ່າສັດທັງຫຼາຍເຂົ້າໄປຢຶດຖືຂັນໃດ ໆ ໃນໂລກ
ມານຍ່ອມຕິດຕາມສັດ ຍ້ອນສິ່ງທີ່ຢຶດຖືນັ້ນ ໆ ແລ

[໑໑໑໑] ຍ້ອນເຫດນັ້ນ ພິກຂຸເມື່ອຮູ້ແຈ້ງ
ເພ່ງພິຈາລະນາໝູ່ສັດນີ້ຜູ້ຕິດຢູ່ໃນບ້ວງແຫ່ງມັດຈຸຣາດ[3]
ວ່າເປັນຜູ້ຂ້ອງຢູ່ໃນເຄື່ອງຢຶດໝັ້ນ

ຄວນເປັນຜູ້ມີສະຕິ ບໍ່ເຂົ້າໄປຍຶດຖືເຄື່ອງກັງວົນໃນໂລກທັງປວງ

**ພັດທະຣາວຸທະມານະວະກະປັນຫາທີ ໑໘ ຈົບ**

## ໑໓. ອຸທະຍະມານະວະກະປັນຫາ[๑]

## ວ່າດ້ວຍປັນຫາຂອງອຸໄທມານົບ

[໑໑໑໘] (ອຸໄທມານົບທູນຖາມດັ່ງນີ້)
ຂ້າພຣະອົງມີປັນຫາທີ່ຈະທູນຖາມ
ຈຶ່ງມາເຝົ້າພຣະອົງຜູ້ຊົງມີຊານ ປາສະຈາກທຸລີ
ປະທັບນັ່ງຢູ່ ຜູ້ຊົງເຮັດກິດສຳເລັດແລ້ວ ບໍ່ມີອາສະວະ
ຊົງເຖິງຝັ່ງແຫ່ງທຳທັງປວງ
ຂໍພຣະອົງໂຜດຕັດບອກອັນຍາວິໂມກ[໒]
ອັນເປັນເຄື່ອງທຳລາຍອະວິດຊາດ້ວຍເທີ້ນ

[໑໑໑໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸໄທ)
ເຮົາຈະບອກອັນຍາວິໂມກ
ອັນເປັນເຄື່ອງລະຄວາມພໍໃຈໃນກາມ ແລະໂທມະນັດທັງ ໒ ຢ່າງ
ເປັນເຄື່ອງບັນເທົາຄວາມທໍ້ຖໍ້
ແລະເປັນເຄື່ອງກັ້ນຄວາມຄະນອງ

[໑໑໒໐] ເຮົາຈະບອກອັນຍາວິໂມກທີ່ບໍລິສຸດ
ຍ້ອນມີອຸເປກຂາແລະສະຕິ
ທີ່ມີທຳຕັກກະເປັນເບື້ອງຕົ້ນ
ເປັນເຄື່ອງທຳລາຍອະວິດຊາ[໓]

[໑໑໒໑] (ອຸໄທມານົບທູນຖາມອີກດັ່ງນີ້)
ສັດໂລກມີອັນໃດເປັນເຄື່ອງປະກອບໄວ້
ອັນໃດນໍເປັນເຫດທ່ຽວໄປຂອງສັດໂລກນັ້ນ
ຍ້ອນລະອັນໃດໄດ້ນໍ ພຣະອົງຈຶ່ງຕັດວ່າ ນິບພານ

[໑໑໒໒] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ສັດໂລກມີຄວາມເພີດເພີນເປັນເຄື່ອງປະກອບໄວ້

ຄວາມນຶກ໌ເປັນເຫດທ່ຽວໄປຂອງສັດໂລກນັ້ນ
ຍ້ອນລະຕັນຫາໄດ້ ເຮົາຈຶ່ງຮຽກວ່າ ນິບພານ

[໑໑໗໗] (ອຸໄທມານົບທູນຖາມອີກດັ່ງນີ້)
ຂ້າພຣະອົງມາເຝົ້າເພື່ອທູນຖາມພຣະຜູ້ມີພຣະພາກເຈົ້າວ່າ
ສັດໂລກມີສະຕິທ່ຽວໄປຢູ່ແນວໃດ ວິນຍານຈຶ່ງດັບເຢັນ
ຂໍຟັງພຣະດຳຣັດນັ້ນຂອງພຣະອົງ

[໑໑໗໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ສັດໂລກບໍ່ຍິນດີເວທະນາພາຍໃນແລະພາຍນອກ
ມີສະຕິທ່ຽວໄປຢູ່ແນວນີ້ ວິນຍານ໌ຈຶ່ງດັບເຢັນ

**ອຸທະຍະມານະວະກະປັນຫາທີ ໑໓ ຈົບ**

## ໑໔. ໂປສາລະມານະວະກະປັນຫາ໌
## ວ່າດ້ວຍປັນຫາຂອງໂປສາລະມານົບ

[໑໑໗໙] (ໂປສາລະມານົບທູນຖາມດັ່ງນີ້)
ພຣະຜູ້ມີພຣະພາກເຈົ້າພຣະອົງໃດ
ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ
ຕັດຄວາມສົງໄສໄດ້ແລ້ວ ຊົງສະແດງອະຕີຕະທຳ
ຂ້າພຣະອົງມີປັນຫາທີ່ຈະທູນຖາມ
ຈຶ່ງມາເຝົ້າພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຜູ້ຊົງເຖິງຝັ່ງແຫ່ງທຳທັງປວງ

[໑໑໘໐] ຂ້າແດ່ພຣະອົງຜູ້ສັກກະ ຂ້າພຣະອົງຂໍທູນຖາມເຖິງຍານ
ຂອງບຸກຄົນຜູ້ບໍ່ມີຮູບສັນຍາ໌ ຜູ້ລະຮູບກາຍໄດ້ທັງໝົດ
ຜູ້ພິຈາລະນາທັງພາຍໃນແລະພາຍນອກເຫັນວ່າບໍ່ມີອັນໃດ
ບຸກຄົນຜູ້ເປັນເຊັ່ນນັ້ນ ຄວນແນະນຳແນວໃດ

[໑໑໘໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂປສາລະ)
ຕະຖາຄົດຮູ້ຍິ່ງເຊິ່ງວິນຍານັດຖິຕິ໌ທັງໝົດ
ຮູ້ຈັກບຸກຄົນນັ້ນຜູ້ດຳລົງຢູ່ ຜູ້ນ້ອມໄປແລ້ວ
ຜູ້ມີອາກິນຈັນຍາຍະຕະນະສະມາບັດນັ້ນເປັນທີ່ມຸ້ງໝາຍ

[໑໑໒໒] ບຸກຄົນນັ້ນຮູ້ກຳມາພິສັງຂານ[໖]ວ່າ ເປັນເຫດເກີດ
ແຫ່ງອາກິນຈັນຍາຍະຕະນະສະມາບັດ
ຮູ້ອະຮູບປະຣາຄະວ່າ ມີຄວາມເພີດເພີນເປັນເຄື່ອງຜູກມັດໄວ້
ເມື່ອຮູ້ກຳແນວນີ້ແລ້ວ ອອກຈາກສະມາບັດນັ້ນ
ເຫັນແຈ້ງທຳທີ່ເກີດໃນສະມາບັດນັ້ນ
ຍານນີ້ຂອງພາມຜູ້ຢູ່ຈົບພົມມະຈັນ
ເປັນຍານອັນແທ້ຈິງ

**ໂປສາລະມານະວະກະປັນຫາທີ ໑໔ ຈົບ**

## ໑໕. ໂມຄະຣາດມານະວະກະບັນຫາ[໑]
## ວ່າດ້ວຍບັນຫາຂອງໂມຄະຣາດມານົບ

[໑໑໒໓] (ໂມຄະຣາດມານົບທູນຖາມດັ່ງນີ້)
ຂ້າພຣະອົງໄດ້ທູນຖາມພຣະອົງຜູ້ສັກກະ ໒ ຄັ້ງແລ້ວ
ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸ ບໍ່ໄດ້ຕັດຕອບແກ່ຂ້າພຣະອົງ
ຂ້າພຣະອົງຮັບຮູ້ມາວ່າ ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນເທບລືສີ
(ຖ້າຜູ້ໃດຖາມບັນຫາ) ເຖິງ ໓ ຄັ້ງ ຈະຕັດຕອບ

[໑໑໒໔] ໂລກນີ້[໒] ໂລກອື່ນ[໓] ພົມມະໂລກພ້ອມທັງເທວະໂລກ
ຍ່ອມບໍ່ຮູ້ແຈ້ງຄວາມເຫັນຂອງພຣະອົງ
ຜູ້ໂຄຕະມະໂຄດ ຜູ້ມີພຣະຍົດ

[໑໑໒໕] ຂ້າພຣະອົງມີບັນຫາທີ່ຈະທູນຖາມຈຶ່ງມາເຝົ້າພຣະອົງ
ຜູ້ຊົງມີປົກກະຕິເຫັນທຳອັນງາມແນວນີ້
ບຸກຄົນພິຈາລະນາເຫັນໂລກແນວໃດ ມັດຈຸຣາດຈຶ່ງບໍ່ເຫັນ

[໑໑໒໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)
ໂມຄະຣາດ ທ່ານຈົ່ງພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ[໔]
ມີສະຕິທຸກເມື່ອ ເພິ່ງຖອນອັດຕານຸທິດຖິ[໕]ສາ
ເປັນຜູ້ຂ້າມມັດຈຸຣາດໄດ້ ດ້ວຍອາການແນວນີ້
ບຸກຄົນພິຈາລະນາເຫັນໂລກແນວນີ້ ມັດຈຸຣາດຈຶ່ງບໍ່ເຫັນ

**ໂມຄະຣາດມານະວະກະບັນຫາທີ ໑໕ ຈົບ**

## ໑໖. ປິງຄິຍະມານະວະກະປັນຫາ[1]
## ວ່າດ້ວຍປັນຫາຂອງປິງຄິຍະມານົບ

[໑໑໘໗] (ປິງຄິຍະມານົບທູນຖາມດັ່ງນີ້)
ຂ້າພຣະອົງຊະຣາພາບແລ້ວ ບໍ່ມີກຳລັງ
ຜິວພັນບໍ່ຜຸດຜ່ອງ ໜ່ວຍຕາບໍ່ແຈ່ມໃສ ຫູຟັງບໍ່ແຈ້ງ
ຂໍຂ້າພຣະອົງຢ່າໄດ້ເປັນຄົນຫຼົງເສຍຫາຍໃນລະຫວ່າງນີ້ເລີຍ
ຂໍພຣະອົງຈົ່ງຕັດບອກທຳທີ່ເປັນເຄື່ອງລະຊາດແລະຊະຣາໃນໂລກນີ້
ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້ເທີ້ນ

[໑໑໘໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປິງຄິຍະ)
ຊົນທັງຫຼາຍເຫັນຊົນອື່ນ ໆ ເດືອດຮ້ອນຢູ່ຍ້ອນຮູບທັງຫຼາຍແລ້ວ
ຍັງຜະໝາດເຈັບປວດຍ້ອນຮູບທັງຫຼາຍ
ປິງຄິຍະ ຍ້ອນແນວນັ້ນ ທ່ານຈົ່ງເປັນຜູ້ບໍ່ຜະໝາດ
ລະຮູບສາໃຫ້ໄດ້ ເພື່ອຈະບໍ່ເກີດອີກຕໍ່ໄປ

[໑໑໘໙] (ປິງຄິຍະມານົບທູນຖາມດັ່ງນີ້)
ທິດໃຫຍ່ ໔ ທິດນ້ອຍ ໔ ທິດເບື້ອງເທິງ ໑
ທິດເບື້ອງລ່າງ ໑ ເຫຼົ່ານີ້ລວມເປັນ ໑໐
ສິ່ງໃດ ໆ ໃນໂລກທີ່ພຣະອົງບໍ່ຊົງເຫັນ ບໍ່ຊົງໄດ້ຍິນ
ບໍ່ຊົງຮູ້ ບໍຊົງຮູ້ແຈ້ງ ບໍ່ໄດ້ມີເລີຍ
ຂໍພຣະອົງໂຜດຕັດບອກທຳເປັນເຄື່ອງລະຊາດແລະຊະຣາໃນໂລກນີ້
ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້ເທີ້ນ

[໑໑໙໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປິງຄິຍະ)
ທ່ານຈົ່ງເພ່ງພິຈາລະນາໝູ່ມະນຸດຜູ້ຖືກຕັນຫາຄອບງຳຈິດ
ເກີດຄວາມຮ້ອນຮົນ ຖືກຊະຣາຄອບງຳແລ້ວ
ປິງຄິຍະ ຍ້ອນແນວນັ້ນ ທ່ານຈົ່ງເປັນຜູ້ບໍ່ຜະໝາດ
ລະຕັນຫາສາໃຫ້ໄດ້ ເພື່ອຈະບໍ່ເກີດອີກຕໍ່ໄປ

**ປິງຄິຍະມານະວະກະປັນຫາທີ ໑໖ ຈົບ**

# ປາຣາຍະນັດຖຸຕິຄາຖາ[๑]

## ວ່າດ້ວຍການສະດຸດີທຳເປັນເຫດໃຫ້ເຖິງຝັ່ງ

ພຣະທຳສັງຄາຫະກາຈານ ເມື່ອຈະສັນເສີນພຣະທຳມະເທດສະໜານີ້ ຈຶ່ງໄດ້ກ່າວໄວ້ດັ່ງນີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຄາຖານີ້ແລ້ວ ເມື່ອປະທັບຢູ່ ປາສານະກະເຈດີ ແຄວ້ນມະຄົດ ໄດ້ຊົງຮັບອາຣາດທະນາຂາບທູນຫຼາຍຄັ້ງຈາກພາມ ໑໖ ຄົນ ຜູ້ເປັນສິດໃກ້ຊິດ ໄດ້ຕັດຕອບບັນຫາແລ້ວຖ້າແມ່ນບຸກຄົນຮູ້ທົ່ວເຖິງອັດຖະ ຮູ້ທົ່ວເຖິງທຳ ແຫ່ງບັນຫາແຕ່ລະບັນຫາແລ້ວປະຕິບັດທຳຖືກຕ້ອງຕາມຫຼັກທຳ ກໍຈະເພິ່ງເຖິງຝັ່ງແຫ່ງຊະຣາແລະມໍລະນະໄດ້ແນ່ນອນ ຍ້ອນທຳເຫຼົ່ານີ້ເປັນເຫດໃຫ້ເຖິງຝັ່ງຍ້ອນເຫດດັ່ງກ່າວມານີ້ນັ້ນ ທຳບັນລະຍາຍນີ້ຈຶ່ງຊື່ວ່າ ປາຣາຍະນະ

[໑໑໓໑] (໑) ອະຊິຕະ (໒) ຕິດສະເມດເຕີຍຍະ (໓) ປຸນນະກະ (໔) ເມດຕະຄູ (໕) ໂທຕະກະ (໖) ອຸປະສີວະ (໗) ນັນທະ (໘) ເຫມະກະ

[໑໑໓໒] (໙) ໂຕເທີຍຍະ (໑໐) ກັບປະ (໑໑) ຊະຕຸກັນນີຜູ້ເປັນບັນດິດ (໑໒) ພັດທະຣາວຸທະ (໑໓) ອຸໄທ (໑໔) ໂປສາລະ (໑໕) ໂມຄະຣາດຜູ້ມີປັນຍາ (໑໖) ປິງຄິຍະຜູ້ເປັນມະຫາລືສີ

[໑໑໓໓] ພາມ ໑໖ ຄົນນີ້ພາກັນມາເຂົ້າເຝົ້າພຣະພຸດທະເຈົ້າ
ຜູ້ຊົງພຽບພ້ອມດ້ວຍຈະຣະນະ ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ເມື່ອຈະທູນຖາມບັນຫາບ່ອນຫຼຸບເລິກ
ຈຶ່ງເຂົ້າໄປໃກ້ເຝົ້າພຣະພຸດທະເຈົ້າຜູ້ປະເສີດ

[໑໑໓໔] ພຣະພຸດທະເຈົ້າ (ອັນພາມເຫຼົ່ານັ້ນ)ທູນຖາມບັນຫາແລ້ວ
ຕັດຕອບບັນຫາແກ່ພາມເຫຼົ່ານັ້ນຕາມຄວາມເປັນຈິງ
ພຣະພຸດທະມຸນີຊົງເຮັດໃຫ້ພາມທັງຫຼາຍພໍໃຈ
ດ້ວຍການຕັດຕອບບັນຫາທັງຫຼາຍ

[໑໑໓໕] ພາມເຫຼົ່ານັ້ນ ອັນພຣະພຸດທະເຈົ້າຜູ້ມີພຣະຈັກຂຸ
ຊົງເປັນເຜົ່າພັນແຫ່ງພຣະອາທິດເຮັດໃຫ້ພໍໃຈແລ້ວ
ໄດ້ປະພຶດພົມມະຈັນໃນສຳນັກພຣະພຸດທະເຈົ້າ

ຜູ້ມີພຣະປັນຍາອັນປະເສີດ

[໑໑໓໖] ການຕັດຕອບບັນຫາແຕ່ລະບັນຫາ
ທີ່ພຣະພຸດທະເຈົ້າຊົງສະແດງແລ້ວໂດຍປະການໃດ
ຜູ້ໃດປະຕິບັດຕາມໂດຍປະການນັ້ນ
ຜູ້ນັ້ນເພິ່ງຈາກທີ່ບໍ່ແມ່ນຝັ່ງ[១]ໄປເຖິງຝັ່ງ[២]ໄດ້

[໑໑໓໗] ບຸກຄົນເມື່ອຈະເລີນມັກອັນສູງສຸດ
ຈະເພິ່ງຈາກທີ່ບໍ່ແມ່ນຝັ່ງໄປເຖິງຝັ່ງໄດ້
(ຍ້ອນ)ມັກນັ້ນ (ເປັນໄປ)ເພື່ອໃຫ້ເຖິງຝັ່ງ
ຍ້ອນແນວນັ້ນ ມັກນັ້ນຈຶ່ງຊື່ວ່າ ປາຣາຍະນະ

## ປາຣາຍະນານຸຄີຕິຄາຖາ[១]

## ວ່າດ້ວຍເພງຂັບຕາມທຳເປັນເຫດໃຫ້ເຖິງຝັ່ງ

[໑໑໓໘] (ທ່ານພຣະປິງຄິຍະກ່າວແກ່ພາມພາວະຣີທ່າມກາງຊຸມຊົນດັ່ງນີ້)
ອາຕະມາພາບຈັກກ່າວບົດຂັບທີ່ເປັນເຫດໃຫ້ເຖິງຝັ່ງ
ຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້
ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ປາສະຈາກມົນທິນ
ພຣະປັນຍາອັນເຕັມປ່ຽມ ປາສະຈາກກາມ
ຊົງຂາດກິເລດດັ່ງປ່າ ຜູ້ເປັນນາຄະ
ຊົງເຫັນແນວໃດກໍຕັດບອກແນວນັ້ນ
ຈະເພິ່ງຕັດຄຳຕົວະຍ້ອນເຫດແຫ່ງອັນໃດນໍ

[໑໑໓໙] ອາຕະມາພາບຈັກກ່າວຄຳເວົ້າທີ່ປະກອບດ້ວຍຄຳສັນເສີນ
ພຣະຜູ້ມີພຣະພາກເຈົ້າຜູ້ຊົງລະມົນທິນແລະໂມຫະໄດ້ແລ້ວ
ຜູ້ຊົງລະຄວາມຖືໂຕແລະຄວາມລົບຫຼູ່ໄດ້ ໃນບັດນີ້

[໑໑໔໐] ທ່ານພາມມະນາຈານ ພຣະຜູ້ມີພຣະພາກພຸດທະເຈົ້າ
ຊົງເປັນຜູ້ກຳຈັດຄວາມມືດ ມີສະມັນຕະຈັກຂຸ
ຊົງເຖິງບ່ອນສຸດໂລກ ຊົງລ່ວງພົບໄດ້ທັງໝົດ
ບໍ່ມີອາສະວະ ຊົງລະທຸກທັງປວງໄດ້ແລ້ວ
ຊົງມີຊື່ຕາມຄວາມຈິງ ອາຕະມາພາບໄດ້ເຂົ້າເຝົ້າມາແລ້ວ

[໑໑໔໑] ນົກເພິ່ງລະປ່ານ້ອຍແລ້ວມາອາໄສປ່າໃຫຍ່ທີ່ມີໝາກໄມ້ຫຼາຍ ສັນໃດ
ອາຕະມາພາບກໍສັນນັ້ນ ລະຄະນາຈານຜູ້ມີທັດສະນະແຄບ[១]
ໄປເຝົ້າພຣະຜູ້ມີພຣະພາກເຈົ້າ
ຄືຫົງເອີ່ນລົງສູ່ສະໃຫຍ່ ສັນນັ້ນ

[໑໑໔໒] ກ່ອນແຕ່ສາດສະໜາຂອງພຣະໂຄດົມ
ອາຈານເຈົ້າລັດທິເຫຼົ່າໃດເຄີຍຕອບແກ່ອາຕະມາພາບວ່າ
ເຫດນີ້ໄດ້ເປັນມາແລ້ວແບບນີ້ ຈັກເປັນແບບນີ້
ຄຳຕອບທັງໝົດນັ້ນ ເປັນຄຳທີ່ເຊື່ອສືບຕໍ່ກັນມາ
ຄຳຕອບທັງໝົດນັ້ນມີແຕ່ຈະເຮັດໃຫ້ນຶກໄປຕ່າງ ໆ
(ອາຕະມາພາບຈຶ່ງບໍ່ຍິນດີຍິ່ງໃນຄຳຕອບນັ້ນ)

[໑໑໔໓] ພຣະໂຄດົມຊົງເປັນເອກບຸຣຸດ ປະທັບນັ່ງ
ທຳລາຍຄວາມມືດຢູ່ ຊົງຮຸ່ງເຮືອງ ຊົງແຜ່ຣັດສະໝີ
ພຣະໂຄດົມຜູ້ມີພຣະຍານອັນເຕັມປ່ຽມ
ພຣະໂຄດົມຜູ້ມີພຣະປັນຍາອັນເຕັມປ່ຽມ

[໑໑໔໔] ທຳໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ພຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທຳ
ທີ່ບຸກຄົນເຫັນໄດ້ເອງ ບໍ່ຈຳກັດການ
ເປັນທີ່ສິ້ນສຸດຕັນຫາ ບໍ່ມີອັນຕະລາຍແກ່ອາຕະມາພາບ

[໑໑໔໕] (ພາມພາວະຣີກ່າວກັບທ່ານພຣະປິງຄິຍະດັ່ງນີ້)
ທ່ານປິງຄິຍະ ຍ້ອນເຫດໃດນໍ
ທ່ານຈຶ່ງຢູ່ປາສະຈາກພຣະໂຄດົມພຣະອົງນັ້ນ
ຜູ້ມີພຣະຍານອັນເຕັມປ່ຽມ ຜູ້ມີພຣະປັນຍາອັນເຕັມປ່ຽມ ສິ້ນການບໍ່ດົນ

[໑໑໔໖] ທຳໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ພຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທຳ
ທີ່ບຸກຄົນເຫັນໄດ້ເອງ ບໍ່ຈຳກັດການ
ເປັນທີ່ສິ້ນສຸດຕັນຫາ ບໍ່ມີອັນຕະລາຍແກ່ທ່ານ

[໑໑໔໗] (ທ່ານພຣະປິງຄິຍະກ່າວດັ່ງນີ້)
ທ່ານພາມ ອາຕະມາພາບ

ບໍ່ໄດ້ຢູ່ປາສະຈາກພຣະໂຄດົມພຣະອົງນັ້ນ
ຜູ້ມີພຣະຍານອັນເຕັມປ່ຽມ
ຜູ້ມີພຣະປັນຍາອັນເຕັມປ່ຽມ ສິ້ນການບໍ່ດົນ

[໑໑໔໗] ທຳໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ພຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທຳ
ທີ່ບຸກຄົນເຫັນໄດ້ເອງ ບໍ່ຈຳກັດການ
ເປັນທີ່ສິ້ນສຸດຕັນຫາ ບໍ່ມີອັນຕະລາຍແກ່ອາຕະມາພາບ

[໑໑໔໘] ທ່ານພາມ ອາຕະມາພາບບໍ່ຜະໝາດທັງກາງຄືນແລະກາງເວັນ
ເຫັນພຣະໂຄດົມພຸດທະເຈົ້າພຣະອົງນັ້ນດ້ວຍໃຈຄືເຫັນດ້ວຍຕາ
ອາຕະມາພາບນອບນ້ອມພຣະອົງຢູ່ຕະຫຼອດຣາຕີ
ອາຕະມາພາບເຂົ້າໃຈຄວາມບໍ່ຢູ່ປາສະຈາກພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

[໑໑໕໐] ທຳເຫຼົ່ານີ້ ຄື ສັດທາ ປີຕິ ມະນະ ແລະສະຕິ
ຍ່ອມບໍ່ຫາຍໄປຈາກສາດສະໜາຂອງພຣະໂຄດົມພຸດທະເຈົ້າ
ພຣະໂຄດົມຜູ້ມີພຣະປັນຍາອັນເຕັມປ່ຽມ ສະເດັດໄປສູ່ທິດໃດ ໆ
ອາຕະມາພາບເປັນຜູ້ນ້ອມໄປທາງທິດນັ້ນ ໆ ນັ້ນແລ

[໑໑໕໑] ອາຕະມາພາບຊະຣາແລ້ວ ມີກຳລັງແລະເຫື່ອແຮງໜ້ອຍ
ຍ້ອນເຫດນັ້ນແລ ຮ່າງກາຍຈຶ່ງໄປໃນສະຖານທີ່
ທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ບໍ່ໄດ້
ແຕ່ອາຕະມາພາບໄປເຝົ້າພຣະອົງເປັນປະຈຳ ໂດຍການໄປນຳຄວາມດຳຣິ
ທ່ານພາມ ຍ້ອນວ່າໃຈຂອງອາຕະມາພາບເກາະກ່ຽວຢູ່ກັບສະຖານທີ່
ທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນັ້ນ

[໑໑໕໒] ອາຕະມາພາບນອນດີ້ນຣົນຢູ່ໃນເປືອກຕົມ[๑]
ລອຍຈາກເກາະໜຶ່ງໄປສູ່ອີກເກາະໜຶ່ງ[๒]
ເມື່ອຕໍ່ມາ ອາຕະມາພາບໄດ້ເຝົ້າພຣະສຳມາສຳພຸດທະເຈົ້າ
ຜູ້ຊົງຂ້າມໂອຄະໄດ້ແລ້ວ ບໍ່ມີອາສະວະ

[໑໑໕໓] (ພຣະຜູ້ມີພຣະພາກເຈົ້າສະເດັດມາຕັດດັ່ງນີ້)
ວັກກະລິ ພັດທະຣາວຸທະ ແລະອາລະວິໂຄດົມ
ເປັນຜູ້ມີສັດທານ້ອມໄປແລ້ວ ສັນໃດ

ແມ່ນທ່ານກໍຈົ່ງປ່ອຍວາງສັດທາ ຄືກັນສັນນັ້ນ
ປິງຄິຍະ ທ່ານຈັກເຖິງຝັ່ງນັ້ນ (ຝັ່ງກົງກັນຂ້າມ)ແຫ່ງບ້ວງມັດຈຸຣາດ

[໑໑໕໔] (ທ່ານພຣະປິງຄິຍະຂາບທູນດັ່ງນີ້)
ຂ້າພຣະອົງນີ້ຟັງພຣະດຳຣັດຂອງພຣະມຸນີແລ້ວເຫຼື້ອມໃສຢ່າງຍິ່ງ
ພຣະສຳມາສຳພຸດທະເຈົ້າມີກິເລດເຄື່ອງປິດບັງອັນເປີດແລ້ວ
ບໍ່ຊົງມີກິເລດຄືຕະປູຕຶງໃຈ ຊົງມີປະຕິພານ

[໑໑໕໕] ພຣະຜູ້ມີພຣະພາກເຈົ້າຊົງຮູ້ແຈ້ງອະທິເທບ[9]
ຊົງຮູ້ທຳທີ່ທຳຄວາມເປັນອະທິເທບຂອງພຣະອົງແລະຂອງຄົນອື່ນທັງປວງ
ຜູ້ເຮັດສ່ວນສຸດແຫ່ງບັນຫາທັງຫຼາຍ
ເພື່ອເຫຼົ່າຊົນຜູ້ມີຄວາມສົງໄສໃຫ້ກັບຮູ້ໄດ້

[໑໑໕໖] ສະພາວະໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ສະພາວະນັ້ນອັນອັນໃດນຳໄປບໍ່ໄດ້ ບໍ່ກຳເຣີບ
ຂ້າພຣະອົງຈັກເຖິງສະພາວະນັ້ນແນ່ແທ້
ຄວາມສົງໄສໃນສະພາວະນັ້ນບໍ່ມີແກ່ຂ້າພຣະອົງ
ຂໍພຣະອົງໂຜດຊົງຈຳຂ້າພຣະອົງວ່າ
ເປັນຜູ້ມີຈິດນ້ອມໄປໃນສະພາວະນັ້ນແລ້ວ ດ້ວຍປະການດັ່ງນີ້ແລ

**ປາຣາຍະນະວັກທີ ໕ ຈົບ**

## ສຸດຕຸດທານະຄາຖາ

## ສະຫຼຸບຄາຖາທີ່ມີໃນສຸດຕະນິບາດ

(໑-໘) ໃນວັກທີ ໑ ມີ

| | | |
|---|---|---|
| ໑. ອຸຣະຄະສູດ | ໒. ທະນິຍະສູດ | ໓. ຂັກຄະວິສານະສູດ |
| ໔. ກະສິພາຣະທະວາຊະສູດ | ໕. ຈຸນທະສູດ | ໖. ປາພະວະສູດ |
| ໗. ວະສະລະສູດ | ໘. ເມດຕະສູດ | ໙. ເຫມະວະຕະສູດ |
| ໑໐. ອາລະວະກະສູດ | ໑໑. ວິຊະຍະສູດ | ໑໒. ມຸນີສູດ |

ລວມເລື້ອງພຣະສູດໃນວັກທີ ໑ ນີ້ທີ່ມີເນື້ອຄວາມປະເສີດສຸດໄດ້ ໑໔ ສູດ ພຣະຜູ້ມີພຣະພາກເຈົ້າຜູ້ຊົງມີພຣະຈັກຂຸຊົງປາສະຈາກມົນທິນ ຊົງຈຳແນກສະແດງໄວ້ດີແລ້ວ ບັນດິດທັງຫຼາຍຕ່າງສະດັບກັນມາວ່າ ອຸຣະຄະວັກ

(໓-໔) ໃນວັກທີ ໒ ມີ

| | | |
|---|---|---|
| ໑. ຣະຕະນະສູດ | ໒. ອາມະຄັນທະສູດ | ໓. ຫິຣິສູດ |
| ໔. ມຸງຄຸນສູດ | ໕. ສູຈິໂລມະສູດ | ໖. ທຳມະຈະຣິຍະສູດ |
| ໗. ພາມມະນະທຳມິກະສູດ | ໘. ນາວາສູດ | ໙. ກິງສີລະສູດ |
| ໑໐. ອຸດຖານະສູດ | ໑໑. ຣາຫຸລະສູດ | ໑໒. ວັງຄີສະສູດ |
| ໑໓. ສຳມາປະຣິບພາຊະນີຍະສູດ | | ໑໔. ທຳມິກະສູດ |

ລວມເລື້ອງພຣະສູດໃນວັກທີ ໒ ນີ້ ໄດ້ ໑໔ ສູດ ພຣະຜູ້ມີພຣະພາກເຈົ້າຊົງຈຳແນກໄວ້ດີແລ້ວ ບັນດິດທັງຫຼາຍກ່າວວ່າ ຈູລະວັກ

(໕-໖) ໃນວັກທີ ໓ ມີ

| | |
|---|---|
| ໑. ປັບພັດຊາສູດ | ໒. ປະທານະສູດ |
| ໓. ສຸພາສິດສູດ | |
| ໔. ສຸນທະຣິກະພາຣະທະວາຊະສູດ | ໕. ມາຄະສູດ |
| ໖. ສະພິຍະສູດ | ໗. ເສລະສູດ |
| ໘. ສັນລະສູດ | ໙. ວາເສດຖະສູດ |
| ໑໐. ໂກກາລິກະສູດ | ໑໑. ນາລະກະສູດ |
| ໑໒. ທະວະຍະຕານຸປັດສະນາສູດ | |

ລວມເລື້ອງພຣະສູດທີ່ມີໃນວັກທີ ໓ ນີ້ ໄດ້ ໑໒ ສູດ ພຣະຜູ້ມີພຣະພາກເຈົ້າຊົງຈຳແນກໄວ້ ດີແລ້ວ ບັນດິດທັງຫຼາຍຕ່າງສະດັບກັນມາວ່າ ມະຫາວັກ

(໗-໘) ໃນວັກທີ ໔ ມີ

| | |
|---|---|
| ໑. ກາມະສູດ | ໒. ຄຸຫັດຖະກະສູດ |
| ໓. ທຸດທັດຖະກະສູດ | ໔. ສຸດທັດຖະກະສູດ |
| ໕. ປະຣະມັດຖະກະສູດ | ໖. ຊະຣາສູດ |
| ໗. ຕິດສະເມດເຕີຍຍະສູດ | ໘. ປະສູຣະສູດ |
| ໙. ມາຄັນທິຍະສູດ | ໑໐. ປຸຣາເພທະສູດ |

໑໑. ກະລະຫະວິວາທະສູດ
໑໓. ມະຫາວິຍູຫະສູດ
໑໕. ອັດຕະທັນທະສູດ
໑໒. ຈູລະວິຍູຫະສູດ
໑໔. ຕຸວະຕະກະສູດ
໑໖. ສາຣີປຸດຕະສູດ

ລວມເລື້ອງພຣະສູດທີ່ມີໃນວັກທີ ໔ ນີ້ ໄດ້ ໑໖ ສູດ ພຣະຜູ້ມີພຣະພາກເຈົ້າຊົງຈຳແນກໄວ້ດີແລ້ວ ບັນດິດທັງຫຼາຍກ່າວວ່າ ອັດຖະກະວັກ

(໙) ພຣະຜູ້ມີພຣະພາກເຈົ້າຜູ້ປະເສີດສຸດໃນຄະນະ
ປະທັບຢູ່ ປາສານະກະເຈດີທີ່ປະເສີດເຊິ່ງຕົກແຕ່ງໄວ້ຢ່າງດີ
ໃນມະຄົດຊົນນະບົດອັນໜ້າອອນຊອນ ມີພູມປະເທດສວຍງາມ
ເປັນບ່ອນຢູ່ອາໄສຂອງບຸກຄົນທີ່ເຄີຍສ້າງບຸນໄວ້

(໑໐) ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າອັນພາມຜູ້ເປັນມານົບ ໑໖ ຄົນ
ຂາບທູນຖາມແລ້ວ ໄດ້ຊົງປະກາດປະທານທຳ
ແກ່ຊົນທັງ ໔ ພວກທີ່ມາປະຊຸມກັນແໜ້ນໜາ ທີ່ປາສານະກະເຈດີ
ກິນເນື້ອທີ່ປະມານ ໑໔ ໂຍດ ຍ້ອນການຖາມໂສລະສະປັນຫາ

(໑໑) ພຣະຜູ້ມີພຣະພາກເຈົ້າຜູ້ຊົງຊະນະມານ
ຜູ້ເລີດກວ່າເທວະດາແລະມະນຸດທັງຫຼາຍ
ໄດ້ຊົງສະແດງທຳທີ່ປະກາດອັດຖະ ບໍລິບູນດ້ວຍພະຍັນຊະນະ
ເປັນບໍ່ເກີດແຫ່ງຄວາມກະເສມຢ່າງຍິ່ງ
ເພື່ອປະໂຫຍດເກື້ອກູນແກ່ຊາວໂລກ
ພຣະຜູ້ມີພຣະພາກເຈົ້າຜູ້ເລີດກວ່າເທວະດາແລະມະນຸດທັງຫຼາຍ
ໄດ້ຊົງສະແດງພຣະສູດທີ່ປະເສີດຫຼວງຫຼາຍດ້ວຍທຳຈຳນວນຫຼາຍ
ເຊິ່ງເປັນເຫດໃຫ້ປິດເປື້ອງກິເລດທັງປວງ

(໑໒) ພຣະຜູ້ມີພຣະພາກເຈົ້າຜູ້ເລີດກວ່າເທວະດາແລະມະນຸດທັງຫຼາຍ
ໄດ້ຊົງສະແດງພຣະສູດທີ່ປະເສີດ
ອັນປະກອບດ້ວຍບົດແຫ່ງພະຍັນຊະນະແລະອັດຖະ
ມີການປຽບທຽບທີ່ພາຍຮູ້ດ້ວຍອັກຂະຣະເຊິ່ງແນ່ນອນ
ເປັນສ່ວນເຮັດວິຈາຣະນະຍານຂອງຊາວໂລກໃຫ້ແຈ່ມແຈ້ງ

(໑໓) ພຣະຜູ້ມີພຣະພາກເຈົ້າຜູ້ເລີດກວ່າເທວະດາແລະມະນຸດທັງຫຼາຍ
ໄດ້ຊົງສະແດງພຣະສູດທີ່ປະເສີດອັນບໍ່ມີມົນທິນ

ຍ້ອນມົນທິນຄືຣາຄະ ໂທສະ ໂມຫະ
ເປັນສ່ວນແຫ່ງທໍາທີ່ປາສະຈາກມົນທິນ
ເປັນສ່ວນເຮັດວິຈາຣະນະຍານຂອງຊາວໂລກໃຫ້ແຈ່ມແຈ້ງ

(໑໔) ພຣະຜູ້ມີພຣະພາກເຈົ້າຜູ້ເລີດກວ່າເທວະດາແລະມະນຸດທັງຫຼາຍ
ໄດ້ຊົງສະແດງພຣະສູດທີ່ປະເສີດ ອັນບໍ່ມີມົນທິນ
ຍ້ອນມົນທິນຄືກິເລດ ມົນທິນຄືທຸດຈະຣິດ
ເປັນສ່ວນແຫ່ງທໍາທີ່ປາສະຈາກມົນທິນ
ເປັນສ່ວນເຮັດວິຈາຣະນະຍານຂອງຊາວໂລກໃຫ້ແຈ່ມແຈ້ງ

(໑໕) ພຣະຜູ້ມີພຣະພາກເຈົ້າຜູ້ເລີດກວ່າເທວະດາແລະມະນຸດທັງຫຼາຍ
ໄດ້ຊົງສະແດງພຣະສູດທີ່ປະເສີດເປັນເຫດປົດເປື້ອງອາສະວະ
ກິເລດເປັນເຄື່ອງຜູກມັດ ແລະກິເລດເປັນເຄື່ອງປະກອບ
ເປັນເຫດປົດເປື້ອງນິວອນແລະມົນທິນທັງ ໓ ຂອງຊາວໂລກນັ້ນ

(໑໖) ພຣະຜູ້ມີພຣະພາກເຈົ້າຜູ້ເລີດກວ່າເທວະດາແລະມະນຸດທັງຫຼາຍ
ໄດ້ຊົງສະແດງພຣະສູດທີ່ປະເສີດເຊິ່ງຫາມົນທິນບໍ່ໄດ້
ເປັນເຄື່ອງບັນເທົາຄວາມເສົ້າໝອງທຸກຢ່າງ
ເປັນເຄື່ອງຄາຍຄວາມກໍາໜັດ ບໍ່ມີຄວາມຫວັ່ນໄຫວ
ໝົດຄວາມໂສກເສົ້າ ເປັນທໍາສະງົບ ປະນີດ ແລະຮູ້ເຫັນໄດ້ຍາກ

(໑໗) ພຣະຜູ້ມີພຣະພາກເຈົ້າຜູ້ເລີດກວ່າເທວະດາແລະມະນຸດທັງຫຼາຍ
ໄດ້ຊົງສະແດງພຣະສູດທີ່ປະເສີດເຊິ່ງຫັກຮານຣາຄະແລະໂທສະໃຫ້ສະງົບ
ເປັນເຄື່ອງຕັດ ເປັນເຄື່ອງຕ້ານທານ
ແລະເປັນເຄື່ອງພົ້ນກໍາເນີດ ທຸກຄະຕິ ວິນຍານ ໕
ແລະຄວາມຍິນດີທີ່ມີຕັນຫາເປັນພື້ນຖານ

(໑໘) ພຣະຜູ້ມີພຣະພາກເຈົ້າຜູ້ເລີດກວ່າເທວະດາແລະມະນຸດທັງຫຼາຍ
ໄດ້ຊົງສະແດງພຣະສູດທີ່ປະເສີດອັນເລິກເຊິ່ງ
ຮູ້ເຫັນໄດ້ຍາກ ແລະລະອຽດອ່ອນ
ມີອັດຖະອັນລຸ້ມເລິກເຊິ່ງຮູ້ໄດ້ສະເພາະບັນດິດ
ເປັນສ່ວນເຮັດວິຈາຣະນະຍານຂອງຊາວໂລກໃຫ້ແຈ່ມແຈ້ງ

(໑໙) ພຣະຜູ້ມີພຣະພາກເຈົ້າຜູ້ເລີດກວ່າເທວະດາແລະມະນຸດທັງຫຼາຍ

ໄດ້ຊົງສະແດງພຣະສູດທີ່ປະເສີດ
ຄືດອກໄມ້ເຄື່ອງປະດັບທີ່ຄົງທົນ ໙ ຊະນິດ
ອັນຈຳແນກອິນຊີ ຊານ ແລະວິໂມກ ອັນມັກມີອົງ ៨
ເປັນຍານເຄື່ອງນຳໄປຢ່າງປະເສີດ

(໘໐) ພຣະຜູ້ມີພຣະພາກເຈົ້າ ຜູ້ເລີດກວ່າເທວະດາແລະມະນຸດທັງຫຼາຍ
ໄດ້ຊົງສະແດງພຣະສູດທີ່ປະເສີດເຊິ່ງປາສະຈາກມົນທິນ
ບໍລິສຸດປຽບຄືດວງຈັນ
ວິຈິດດ້ວຍຣັດຕະນະ ປຽບຄືແມ່ນ້ຳ
ສະເໝີດ້ວຍດອກໄມ້ ມີອຳນາດປຽບດັ່ງດວງອາທິດ

(໘໑) ພຣະຜູ້ມີພຣະພາກເຈົ້າຜູ້ເລີດກວ່າເທວະດາແລະມະນຸດທັງຫຼາຍ
ໄດ້ຊົງສະແດງພຣະສູດທີ່ປະເສີດ ປອດໂປ່ງ ກະເສມ
ໃຫ້ຄວາມສຸກ ຊຸ່ມເຢັນ ສະຫງົບ
ເປັນເຄື່ອງຕ້ານທານມັດຈຸຣາດຢ່າງຍິ່ງ ມີປະໂຫຍດຢ່າງສູງ
ເປັນເຫດໃຫ້ຊາວໂລກນັ້ນຮູ້ແຈ້ງເຫັນຈິງເຊິ່ງສະພາວະທຳທີ່ດັບກິເລດໄດ້ແລ້ວ

**ສຸດຕະນິບາດ ຈົບ**